# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໑໐

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໔໘

## ຂຸດທະກະນິກາຍ ຈູລະນິດເທດ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄໍາປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທໍາມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈໍານວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກໍາຄ່າໃຊ້ຈ່າຍ ຈົບສໍາເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄໍາສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລໍາພັງພຽງອົງດຽວຢູ່ຫໍທໍາມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງ ຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສໍາເລັດໄດ້ ໘ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໘ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສໍາເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສໍານວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນໍາເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄໍານໍາ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄໍາຜິດ ສໍານວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນໍາໃຫ້ລະມັດລະວັງໃນການນໍາໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອໍານວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນໍາໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນໍາເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທໍາຂອງອົງສົມເດັດ ພຣະສໍາມາສໍາພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໓໐

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໔໔

## ຂຸດທະກະນິກາຍ ຈູລະນິດເທດ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ**

## ປາຣາຍະນະວັກ

## ໝວດວ່າດ້ວຍທໍາເປັນເຫດໃຫ້ເຖິງຝັ່ງ

## ໑. ວັດຖຸຄາຖາ

### ເລື້ອງພາມພາວະຣີສົ່ງສິດໄປທູນຖາມບັນຫາ

[๑] ພາມພາວະຣີ ຜູ້ຮຽນຈົບມົນ
ປາຖະໜາຄວາມເປັນຜູ້ບໍ່ມີກັງວົນ
ຈຶ່ງເດີນທາງອອກຈາກແຄວ້ນໂກສົນ
ອັນຮື່ນຣົມ ໄປສູ່ທັກຂິນາປະຖະຊົນນະບົດ

[໔] ທ່ານອາໄສຢູ່ທີ່ຝັ່ງແມ່ນໍ້າໂຄທາວະຣີ
ອັນເປັນຊາຍແດນແຄວ້ນອັດສະກະກັບແຄວ້ນມຸລະກະຕໍ່ກັນ
(ລ້ຽງຊີບ) ຢູ່ດ້ວຍການທ່ຽວພິກຂາແລະໝາກໄມ້

[໓] ຍ້ອນອາໄສພາມນັ້ນ ໆ ເອງ
ໝູ່ບ້ານຈຶ່ງໄດ້ຈະເລີນໄພບູນ

ທ່ານໄດ້ປະກອບພິທີມະຫາຍັນຂຶ້ນ
ດ້ວຍຣາຍໄດ້ທີ່ເກີດຈາກໝູ່ບ້ານນັ້ນ

[໔] ທ່ານບູຊາມະຫາຍັນສຳເລັດແລ້ວ ກໍກັບເຂົ້າອາສົມ
ເມື່ອທ່ານກັບເຂົ້າອາສົມແລ້ວ
ພາມອີກຄົນໜຶ່ງ ກໍເດີນທາງມາເຖິງ

[໕] ພາມທີ່ມາພົບນັ້ນ ມີຕີນຍ່າງສຽດສີກັນ
ທ່າທາງເປັນຕາຢ້ານມີແຂ້ວເປິະເປື້ອນ
ຫົວກໍເຕັມໄປດ້ວຍສິ່ງສົກກະປົກ
ເຂົ້າໄປຫາພາມພາວະຣີແລ້ວ
ຂໍຊັບ ໕໐໐ ກະຫາປະນະ

[໖] ພາມພາວະຣີເຫັນເຂົາແລ້ວກໍເຊີນໃຫ້ນັ່ງ
ໄຕ່ຖາມເຖິງຄວາມສຸກຄວາມສະບາຍ ຈຶ່ງກ່າວຄຳນີ້ວ່າ

[໗] ສິ່ງຂອງທີ່ຄວນໃຫ້ເຊິ່ງເປັນຂອງເຮົາທັງໝົດ
ເຮົາສະລະໄປແລ້ວ ພາມເອີຍ
ທ່ານຈົ່ງເຊື່ອເຮົາເທີ້ນ ເຮົາບໍ່ມີຊັບ ໕໐໐ ເລີຍ

[໘] (ປັງກະທັນຕະພາມກ່າວວ່າ)

ຖ້າເມື່ອເຮົາຂໍ ທ່ານບໍ່ໃຫ້ສິ່ງທີ່ມີຢູ່
ໃນວັນທີ ໗ ຂໍໃຫ້ຫົວທ່ານແຕກເປັນ ໗ ສ່ຽງ

[໙] ພາມນັ້ນເປັນຄົນເວົ້າຕົວະ
ສະແດງທ່າທາງ (ຫຼອກລວງ) ກ່າວຄຳທີ່ເປັນຕາຢ້ານ
ພາມພາວະຣີໄດ້ຟັງຄຳເວົ້າຂອງເຂົາແລ້ວກໍເປັນທຸກ

[໑໐] (ພາມພາວະຣີ) ຖືກລູກສອນ ຄື ຄວາມເສົ້າໂສກສຽບແທງແລ້ວ
ບໍ່ບໍຣິໂພກອາຫານ ຊູບຜອມ
ເມື່ອທ່ານມີຄວາມຄິດແນວນັ້ນ ໃຈກໍບໍ່ຍິນດີໃນຊານ

[໑໑] ເທວະດາຜູ້ປາຖະໜາປະໂຫຍດ
ເຫັນພາມພາວະຣີຢ້ານກົວເປັນທຸກຢູ່
ຈຶ່ງເຂົ້າໄປຫາທ່ານແລ້ວກ່າວຄຳນີ້ວ່າ

[໑໒]  ພາມຜູ້ຕ້ອງການຊັບນັ້ນເປັນຄົນເວົ້າຕົວະ
ເຂົາບໍ່ຮູ້ຈັກຫົວ ບໍ່ມີຄວາມຮູ້ເລື້ອງຫົວ
ແລະທຳທີ່ເຮັດໃຫ້ຫົວຕົກໄປ

[໑໓]  (ພາມພາວະຣີຄິດວ່າ) ເທວະດາຜູ້ຈະເລີນນີ້ຄົງຈະຮູ້
(ຈຶ່ງກ່າວໄປວ່າ) ຂ້າພະເຈົ້າຂໍຖາມເລື້ອງຫົວ
ແລະທຳທີ່ເຮັດໃຫ້ຫົວຕົກໄປ
ຂໍທ່ານຈົ່ງບອກເລື້ອງນັ້ນແກ່ຂ້າພະເຈົ້າດ້ວຍເທີ້ນ
ຂ້າພະເຈົ້າຂໍຟັງຄຳຕອບຂອງທ່ານ

[໑໔] (ເທວະດາກ່າວວ່າ)

ແມ່ນຂ້າພະເຈົ້າກໍບໍ່ຮູ້ຈັກເລື້ອງຫົວ
ແລະທຳທີ່ເຮັດໃຫ້ຫົວຕົກໄປ
ຂ້າພະເຈົ້າບໍ່ມີຄວາມຮູ້ໃນເລື້ອງນີ້
ເລື້ອງຫົວແລະທຳທີ່ເຮັດໃຫ້ຫົວຕົກໄປ
ເປັນຄວາມສາມາດຂອງພຣະຊິນນະເຈົ້າເທົ່ານັ້ນ

[໑໕] (ພາມພາວະຣີກ່າວວ່າ)

ເທວະດາ ກໍໃຜນໍໃນປະຖະພີມົນທົນນີ້
ຮູ້ຈັກຫົວແລະທຳທີ່ເຮັດໃຫ້ຫົວຕົກໄປ
ຂໍທ່ານຈົ່ງບອກຜູ້ນັ້ນແກ່ຂ້າພະເຈົ້າດ້ວຍເທີ້ນ

[໑໖] (ເທວະດາກ່າວວ່າ)

ພຣະໂອຣົດຂອງເຈົ້າສາກະຍະ
ເປັນເຊື້ອພຣະວົງຂອງພຣະເຈົ້າໂອກກາກະ
ສະເດັດອອກບວດຈາກນະຄອນກະບິນລະພັດ
ຊຶ່ງເປັນຜູ້ນຳສັດໂລກ ເປັນຜູ້ກໍ່ຄວາມສະຫວ່າງສະໄຫວ

[໑໗] (ເທວະດາກ່າວວ່າ)

ພາມ ເຈົ້າສາກະຍະບຸດພຣະອົງນັ້ນ
ເປັນພຣະສຳພຸດທະເຈົ້າ ຊຶ່ງເຖິງຝັ່ງແຫ່ງທຳທັງປວງ

ບັນລຸກຳລັງແຫ່ງອະພິນຍາທັງໝົດແລ້ວ
ມີພຣະຈັກຂຸໃນທຳທັງປວງ
ຊຶ່ງເຖິງທຳເປັນບ່ອນສິ້ນກຳທຸກຢ່າງ
ຊຶ່ງນ້ອມພຣະຫະໄທໄປໃນທຳເປັນບ່ອນສິ້ນອຸປະທິ

[໑໙] ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນພຣະພຸດທະເຈົ້າໃນໂລກ
ມີພຣະຈັກຂຸ ຊຶ່ງສະແດງທຳ
ທ່ານຈົ່ງໄປທູນຖາມພຣະອົງເທີ້ນ
ພຣະອົງຈັກຊົງພະຍາກອນບັນຫານັ້ນແກ່ທ່ານໄດ້

[໑໘] ພາມພາວະຣີໄດ້ຟັງຄຳວ່າ ພຣະສຳພຸດທະເຈົ້າ
ກໍເບີກບານໃຈ ຄວາມເສົ້າໂສກກໍເບົາບາງລົງ
ແລະໄດ້ຮັບປິຕິປ່ງມລົ້ນ

[໔໐] ພາມພາວະຣີນັ້ນດີໃຈ ເບີກບານໃຈ
ເກີດຄວາມຍິນດີໃຈ
ຈຶ່ງໄຕ່ຖາມເທວະດາເຖິງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
(ແລະປະກາດວ່າ) ພຣະສຳພຸດທະເຈົ້າ
ຜູ້ເປັນບ່ອນເພິ່ງຂອງສັດໂລກປະທັບຢູ່ ໃນບ່ອນໃດ
ຈະເປັນບ້ານ ນິຄົມ ຫຼື ຊົນນະບົດໃດກໍຕາມ
ພວກເຮົາເພິ່ງໄປເຂົ້າເຝົ້າພຣະສຳພຸດທະເຈົ້າ
ຜູ້ສູງສຸດກວ່າເທວະດາແລະມະນຸດທັງຫຼາຍ

[໔໑] (ເທວະດາກ່າວວ່າ)

ເຈົ້າສັກກາຍະບຸດພຣະອົງນັ້ນ ຜູ້ຊົງຊະນະມານ
ມີພຣະປັນຍາກວ້າງຂວາງ ມີພຣະປັນຍາລ້ຳເລີດແຜ່ໄພສານຍິ່ງ
ຊົງປາສະຈາກທຸຣະ ບໍ່ມີອາສະວະ
ຊົງເປັນຜູ້ຮູ້ແຈ້ງເລື້ອງທົ່ວແລະທຳທີ່ເຮັດໃຫ້ທົ່ວຕົກໄປ
ຊົງເປັນຜູ້ອົງອາດກວ່ານໍຣະຊົນ
ປະທັບຢູ່ໃນມົນທຽນສະຖານຂອງພຣະເຈົ້າໂກສົນເຂດນະຄອນສາວັດຖີ

[໔໒] ລຳດັບນັ້ນ ພາມພາວະຣີໄດ້ຮຽກພາມທັງຫຼາຍ
ຜູ້ເປັນສິດ ເຊິ່ງຮຽນຈົບມົນມາກ່າວວ່າ ມານົບທັງຫຼາຍ
ມານີ້ເທີ້ນ ເຮົາຈັກບອກ ຂໍພວກທ່ານຈົ່ງຟັງຄຳຂອງເຮົາ

[໘໓] (ພາມພາວະຣີກ່າວຕໍ່ໄປວ່າ)

ຄວາມທີ່ພຣະຜູ້ມີພຣະພາກເຈົ້າພຣະອົງໃດຜາກົດເນືອງ ໆ ໃນໂລກນັ້ນຫາໄດ້ຍາກ ວັນນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ສະເດັດອຸບັດໃນໂລກແລ້ວ ຜາກົດພະນາມວ່າ ພຣະສໍາພຸດທະເຈົ້າ ພວກທ່ານຈົ່ງຟ້າວໄປນະຄອນສາວັດຖີ ເຂົ້າເຝົ້າພຣະສໍາພຸດທະເຈົ້າ ຜູ້ສູງສຸດກວ່າເທວະດາແລະມະນຸດທັງຫຼາຍ

[໘໔] (ມານົບທັງຫຼາຍຖາມວ່າ)

ຂ້າແຕ່ພາມ ຖ້າພວກຂ້າພະເຈົ້າພົບແລ້ວ
ຈະຮູ້ໄດ້ແນວໃດວ່າເປັນພຣະພຸດທະເຈົ້າ
ຂໍທ່ານຈົ່ງບອກວິທີທີ່ຈະຮູ້ຈັກພຣະອົງ
ແກ່ພວກຂ້າພະເຈົ້າຜູ້ບໍ່ຮູ້ດ້ວຍເທີ້ນ

[໘໕] (ພາມພາວະຣີກ່າວວ່າ)

ກໍມະຫາປຸຣິສະລັກສະນະ ໓໒ ປະການ
ອັນມາແລ້ວໃນມົນທັງຫຼາຍ
ທ່ານກ່າວໄວ້ແຈ່ມແຈ້ງຄົບຖ້ວນໂດຍລໍາດັບ

[໘໖] ບຸກຄົນໃດມີມະຫາປຸຣິສະລັກສະນະເຫຼົ່ານັ້ນຢູ່ໃນຕົວ
ບຸກຄົນນັ້ນມີຄະຕິເປັນ ໒ ຢ່າງເທົ່ານັ້ນ
ບໍ່ໄດ້ມີຄະຕິເປັນທີ ໓ ເລີຍ

[໘໗] ຄື ຖ້າບຸກຄົນນັ້ນຢູ່ຄອງເຮືອນ
ຈະເພິ່ງຄອບຄອງແຜ່ນດິນນີ້
ຍ່ອມປົກຄອງໂດຍທໍາ
ໂດຍບໍ່ຕ້ອງໃຊ້ອາຍາ ບໍ່ຕ້ອງໃຊ້ອາວຸດ

[໘໘] ແຕ່ຖ້າບຸກຄົນນັ້ນ ອອກຈາກເຮືອນບວດເປັນບັນພະຊິດ
ຈະເປັນພຣະອະຣະຫັນຕະສໍາພຸດທະເຈົ້າຜູ້ປະເສີດ
ມີກິເລດດັ່ງເຄື່ອງປິດບັງອັນເປີດແລ້ວ

[໘໙] ພວກທ່ານຈົ່ງທູນຖາມດ້ວຍໃຈເທົ່ານັ້ນເຖິງຊາດ
ໂຄດ ລັກສະນະ ມົນ ສິດຄົນອື່ນ ໆ
ຫົວແລະທໍາທີ່ເຮັດໃຫ້ຫົວຕົກໄປ

[໓໐] ຖ້າບຸກຄົນນັ້ນເປັນພຣະພຸດທະເຈົ້າ
ຜູ້ມີປົກກະຕິເຫັນທຳທາເຄື່ອງກາງກັ້ນບໍ່ໄດ້
ເມື່ອພວກທ່ານຖາມບັນຫາດ້ວຍໃຈແລ້ວ
ກໍຈັກຊີ້ງວິສັດຊະນາດ້ວຍພຣະວາຈາ

[໓໑] ເມື່ອຟັງຄຳຂອງພາມພາວະຣີແລ້ວ
ພາມ ໑໖ ຄົນຜູ້ເປັນສິດ ຄື (໑) ອະຊິຕະ
(໒) ຕິດສະເມດໄຕຍະ (໓) ປຸນນະກະ (໔) ເມດຕະຄູ

[໓໒] (໕) ໂທຕະກະ (໖) ອຸປະສີວະ (໗) ນັນທະ (໘) ເຫມະກະ
(໙) ໂຕເທີຍຍະ (໑໐) ກັບປະ (໑໑) ຊະຕຸກັນນີ ຜູ້ເປັນບັນດິດ

[໓໓] (໑໒) ພັດທະຣາວຸດ (໑໓) ອຸໄທ (໑໔) ໂປສາລະ
(໑໕) ໂມຄະຣາດ ຜູ້ມີປັນຍາ (໑໖) ປິງຄິຍະ ຜູ້ເປັນມະຫາຣືສີ

[໓໔] ພາມຜູ້ເປັນສິດ ໑໖ ຄົນນັ້ນ
ແຕ່ລະຄົນເປັນເຈົ້າໝູ່ ເຈົ້າຄະນະ ມີຊື່ຜາກົດແກ່ຊາວໂລກທົ່ວໄປ
ເປັນຜູ້ບຳເພັນຊານ ຍິນດີໃນຊານ
ເປັນຜູ້ມີປັນຍາປາດເປື່ອງ
ເຄີຍອົບຣົມວາດສະໜາແຕ່ຊາດປາງກ່ອນທັງນັ້ນ

[໓໕] ທຸກຄົນເກົ້າຊະດາແລະຄອງໜັງເສືອ
ອະພິວາດພາມພາວະຣີແລະກະທຳປະທັກຂິນແລ້ວ
ຕ່າງອອກເດີນທາງມຸ້ງໜ້າໄປທາງທິດອຸດອນ

[໓໖] ສູ່ສະຖານທີ່ຕັ້ງແຄວ້ນມຸລະກະ ນະຄອນມາຫິດສະຕິໃນການນັ້ນ
ນະຄອນອຸດເຊນີ ເມືອງໂຄນັດທະ ເມືອງເວທິສາ ເມືອງວະນະສະວະຫະຍາ

[໓໗] ນະຄອນໂກສຳພີ ເມືອງສາເກດ ນະຄອນສາວັດຖີອັນອຸດົມ
ເມືອງເສຕັບພະຍະ ນະຄອນກະບິນລະພັດ ນະຄອນກຸສິນາຣາ

[໓໘] ນະຄອນປາວາ ໂພຄະນະຄອນ ນະຄອນເວສາລີ ແຄວ້ນມະຄົດ
ແລະປາສານະກະເຈດີ ອັນຣື່ນຣົມ ໜ້າຣື່ນເຣີງໃຈ

[໓໙] ພາມເຫຼົ່ານັ້ນຟ້າວຂຶ້ນສູ່ພູເຂົາ
ເໝືອນຄົນກະຫາຍນ້ຳຟ້າວຫານ້ຳເຢັນດື່ມ

ເໝືອນພໍ່ຄ້າໄດ້ລາບໃຫຍ່ມາຄອງ
ແລະເໝືອນຄົນຖືກຄວາມຮ້ອນແຜດເຜົາຟ້າວຫາຮົ່ມເງົາ

[໔໐] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າມີພິກຂຸສົງແວດລ້ອມ
ຊົງສະແດງທຳແກ່ພິກຂຸທັງຫຼາຍຢູ່
ປະໜຶ່ງວ່າຣາດຊະສີບັນລືສີຫະນາດຢູ່ໃນປ່າ

[໔໑] ອະຊິຕະມານົບໄດ້ເຫັນພຣະພຸດທະເຈົ້າ
ຜູ້ເປັນດັ່ງດວງອາທິດອັນມີຣັດສະໝີເຈີດຈ້າ
ແລະດັ່ງດວງຈັນເຕັມດວງໃນວັນເພັນ

[໔໒] ລຳດັບນັ້ນ ອະຊິຕະມານົບຢືນຢູ່ ໃນທີ່ສົມຄວນ
ຣື່ນເຣີງໃຈ ຍ້ອນໄດ້ເຫັນອະນຸພະຍັນຊະນະ
ບໍລິບູນໃນພຣະວໍຣະກາຍຂອງພຣະຜູ້ມີພຣະພາກເຈົ້າ
ຈຶ່ງໄດ້ທູນຖາມບັນຫາດ້ວຍໃຈວ່າ

[໔໓] (ອະຊິຕະມານົບທູນຖາມບັນຫາທາງໃຈວ່າ)

ຂໍພຣະອົງຕັດຣະບຸໃຫ້ຊັດເຈັນ
ເຖິງຊາດ ໂຄດ ພ້ອມດ້ວຍລັກສະນະ
ຂໍໂຜດຕັດບອກຄວາມສຳເລັດໃນມົນທັງຫຼາຍວ່າ
ພາມສອນມານົບແນວໃດ

[໔໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ພາມນັ້ນມີອາຍຸ ໑໒໐ ປີ ຊື່ພາວະຣີໂດຍໂຄດ
ມີລັກສະນະ ໓ ຢ່າງຢູ່ໃນຕົວ ເປັນຜູ້ຮຽນຈົບໄຕຣເພດ

[໔໕] ພາມນັ້ນເຖິງຄວາມສຳເລັດ
ໃນລັກສະນະມົນແລະປະຫວັດສາດ
ພ້ອມທັງນິຄັນຖຸສາດ ແລະເກຕຸພະສາດ
ຊື່ວ່າເຖິງຄວາມສຳເລັດໃນຫຼັກທຳຂອງຕົນ
ກ່າວສອນມົນແກ່ສິດ ໕໐໐ ຄົນ

[໔໖] (ອະຊິຕະມານົບທູນຖາມວ່າ)

ຂ້າແຕ່ ພຣະອົງຜູ້ສູງສຸດກວ່ານໍຣະຊົນ ຜູ້ຕັດຕັນຫາສາໄດ້
ຂໍພຣະອົງໂຜດປະກາດຄວາມເດ່ນຊັດ
ແຫ່ງລັກສະນະຂອງພາມພາວະຣີ
ຢ່າໃຫ້ພວກຂ້າພຣະອົງມີຄວາມສົງໄສເລີຍ

[໔໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ພາມນັ້ນຍ່ອມໃຊ້ລີ້ນປິດໜ້າໄດ້
ມີອຸນາໂລມຢູ່ລະຫວ່າງຄິ້ວ ມີຄຸຍຫະຖານຊ່ອນຢູ່ໃນຝັກ
ມານົບ ທ່ານຈົ່ງຮູ້ແນວນີ້

[໔໘] ຊົນທັງປວງບໍ່ໄດ້ຍິນໃຜຖາມບັນຫາອັນໃດ
ໄດ້ຍິນແຕ່ບັນຫາທີ່ພຣະພຸດທະເຈົ້າຊົງພະຍາກອນ
ກໍຍິນດີໃຈ ປະນົມອັນຊະລີແລ້ວພາກັນຄິດໄປຕ່າງ ໆ ວ່າ

[໔໙] ໃຜນໍ ເປັນເທບ ເປັນພຣະພົມ
ຫຼືພຣະອິນຜູ້ສຸຊຳບໍດີເມື່ອຖາມບັນຫາດ້ວຍໃຈ
ພຣະຜູ້ມີພຣະພາກເຈົ້າຕັດບອກບັນຫານັ້ນກັບໃຜນໍ

[໕໐] (ອະຊິຕະມານົບຂາບທູນວ່າ)

ພາມພາວະຣີຖາມເຖິງເລື້ອງຫົວ
ແລະທຳທີ່ເຮັດໃຫ້ຫົວຕົກໄປ
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຂໍພຣະອົງໂຜດພະຍາກອນບັນຫານັ້ນ
ກຳຈັດຄວາມສົງໄສຂອງພວກຂ້າພຣະອົງດ້ວຍເທີ້ນ

[໕໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

ທ່ານຈົ່ງຮູ້ເທີ້ນວ່າ ອະວິດຊາເປັນຫົວ
ວິດຊາທີ່ປະກອບດ້ວຍສັດທາ ສະຕິ ສະມາທິ ສັນທະ
ແລະວິຣິຍະເປັນທຳທີ່ເຮັດໃຫ້ຫົວຕົກໄປ

[໕໒] ລຳດັບນັ້ນ ອະຊິຕະມານົບ ມີຄວາມຍິນດີໃຈຫຼາຍລົ້ນ
ສະນັບສະໜູນແລ້ວ ພາດໜັງເສືອບ່ຽງບ່າ
ຊົບຫົວລົງແທບພຣະຍຸຄົນບາດ (ແລ້ວຂາບທູນຕໍ່ໄປວ່າ)

[໕໓]　　ຂ້າແຕ່ ພຣະອົງຜູ້ມີຣະທຸກ ຜູ້ມີພຣະຈັກຂຸ
ພາມພາວະຣີ ພ້ອມດ້ວຍເຫຼົ່າສິດມີຈິດເບີກບານ ດີໃຈ
ຂໍຖວາຍອະພິວາດພຣະຍຸຄົນບາດຂອງພຣະອົງ

[໕໔] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)

　　ຂໍພາມພາວະຣີ ພ້ອມດ້ວຍເຫຼົ່າສິດ
ຈົ່ງມີຄວາມສຸກ ແລະແມ່ນທ່ານເອງກໍຂໍໃຫ້ມີຄວາມສຸກ
ມີຊີວິດຢູ່ຍືນຍາວເທີ້ນ ມານົບ

[໕໕]　　ເຮົາໃຫ້ໂອກາດແກ່ພາມພາວະຣີ ແກ່ທ່ານ
ແລະມານົບທັງໝົດຖາມຂໍ້ສົງໄສທັງປວງ
ພວກທ່ານປາຖະໜາຈະຖາມບັນຫາແນວໃດແນວໜຶ່ງກໍຈົ່ງຖາມເທີ້ນ

[໕໖]　　ອະຊິຕະມານົບໄດ້ຮັບໂອກາດຈາກພຣະສຳພຸດທະເຈົ້າແລ້ວ
ນັ່ງປະຄອງອັນຊະລີ ທູນຖາມບັນຫາຂໍ້ທຳອິດກັບພຣະຕະຖາຄົດເຈົ້າ
ໃນປາສານະກະເຈດີນັ້ນ

**ວັດຖຸຄາຖາຈົບ**

# ໘. ມານະວະບັນຫາ

## ວ່າດ້ວຍບັນຫາຂອງມານົບ ໑໖ ຄົນ

## ໑. ອະຊິຕະມານະວະບັນຫາ

## ວ່າດ້ວຍບັນຫາຂອງອະຊິຕະມານົບ

[໕໗] (ທ່ານອະຊິຕະທູນຖາມ ດັ່ງນີ້)

　　ໂລກຖືກອັນໃດນໍ ຫຸ້ມຫໍ່ໄວ້
ຍ້ອນເຫດໃດນໍ ໂລກຈຶ່ງບໍ່ສົດໃສ
ຂໍພຣະອົງໂຜດຕັດບອກວ່າ
ອັນໃດເປັນເຄື່ອງສາບທາໂລກນັ້ນໄວ້
ອັນໃດນໍ ເປັນໄພໃຫຍ່ຂອງໂລກນັ້ນ (໑)

[໔໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອະຊິຕະ)

ໂລກຖືກອະວິດຊາຫຸ້ມຫໍ່ໄວ້
ໂລກບໍ່ສົດໃສຍ້ອນຄວາມຂີ້ຖີ່ແລະຄວາມຜະໝາດ
ເຮົາຮຽກຄວາມຢາກວ່າເປັນເຄື່ອງສາບທາໂລກໄວ້
ທຸກເປັນໄພໃຫຍ່ຂອງໂລກນັ້ນ (໒)

[໔໙] (ທ່ານອະຊິຕະທູນຖາມ ດັ່ງນີ້)

ກະແສທັງຫຼາຍຍ່ອມໄຫຼໄປໃນທີ່ທັງປວງ
ອັນໃດເປັນເຄື່ອງກັ້ນກະແສທັງຫຼາຍ
ຂໍພຣະອົງໂຜດຕັດບອກທຳເຄື່ອງປ້ອງກັນກະແສທັງຫຼາຍ
ອັນໃດປິດກັ້ນກະແສທັງຫຼາຍໄດ້ (໓)

[໕໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອະຊິຕະ)

ກະແສເຫຼົ່າໃດໃນໂລກ
ສະຕິເປັນເຄື່ອງກັ້ນກະແສເຫຼົ່ານັ້ນໄດ້
ເຮົາກ່າວທຳເຄື່ອງປ້ອງກັນກະແສທັງຫຼາຍ
ປັນຍາປິດກັ້ນກະແສເຫຼົ່ານັ້ນໄດ້ (໔)

[໕໑] (ທ່ານອະຊິຕະທູນຖາມ ດັ່ງນີ້)

ຂ້າແຕ່ພຣະອົງຜູ້ນິຣະທຸກ ປັນຍາ ສະຕິ
ນາມແລະຮູບນີ້ດັບບ່ອນໃດ ຂ້າພຣະອົງໄດ້ທູນຖາມແລ້ວ
ຂໍພຣະອົງໂຜດຕັດບອກເນື້ອຄວາມນັ້ນ
ແກ່ຂ້າພຣະອົງດ້ວຍເທີ້ນ (໕)

[໕໒] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ອະຊິຕະ ທ່ານໄດ້ຖາມບັນຫານັ້ນໃດ
ເຮົາຈະກ່າວແກ້ບັນຫານັ້ນແກ່ທ່ານ
ນາມແລະຮູບນັ້ນດັບບໍ່ມີສ່ວນເຫຼືອໃນບ່ອນໃດ
ນາມແລະຮູບນັ້ນດັບໄປໃນບ່ອນນັ້ນຍ້ອນວິນຍານດັບ (໖)

[໕໓] (ທ່ານອະຊິຕະທູນຖາມ ດັ່ງນີ້)

ພຣະອະຣະຫັນຕະຂີນາສົບເຫຼົ່າໃດຜູ້ມີສັງຂາຕະທຳ

ແລະພຣະເສຂະເຫຼົ່າໃດທີ່ມີຢູ່ເປັນຈຳນວນຫຼາຍໃນບ່ອນນີ້
ຂ້າແຕ່ພຣະອົງຜູ້ນິຣະທຸກ ຂ້າພຣະອົງທູນຖາມແລ້ວ
ຂໍພຣະອົງຜູ້ມີປັນຍາ ໂຜດຕັດບອກການດຳເນີນຊີວິດ
ຂອງພຣະອະຣະຫັນຕະຂີນາສົບ ແລະພຣະເສຂະເຫຼົ່ານັ້ນເທີ້ນ (໗)

[໖໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ພິກຂຸບໍ່ເພິ່ງປາຖະໜາຍິ່ງໃນກາມທັງຫຼາຍ
ເພິ່ງເປັນຜູ້ມີໃຈບໍ່ຂຸ່ນມົວ ສະຫຼາດໃນທຳທັງປວງ
ມີສະຕິດຳຣົງຢູ່ (໘)

**ອະຊິຕະມານະວະບັນຫາທີ ໑ ຈົບ**

## ໔. ຕິດສະເມດໄຕຍະມານະວະບັນຫາ

## ວ່າດ້ວຍບັນຫາຂອງຕິດສະເມດໄຕຍະມານົບ

[໖໕] (ທ່ານຕິດສະເມດໄຕຍະທູນຖາມ ດັ່ງນີ້)

ໃຜຊື່ວ່າເປັນຜູ້ສັນໂດດໃນໂລກນີ້
ຄວາມຫວັ່ນໄຫວທັງຫຼາຍຍ່ອມບໍ່ມີແກ່ໃຜ
ໃຜຮູ້ແຈ້ງສ່ວນສຸດທັງ ໔ ດ້ານແລ້ວ
ບໍ່ຢຶດຕິດໃນທ່າມກາງດ້ວຍມັນຕາ
ພຣະອົງຕັດຮຽກໃຜວ່າເປັນມະຫາບຸຣຸດ
ໃຜລ່ວງພົ້ນເຄື່ອງຮ້ອຍຮັດໃນໂລກນີ້ໄດ້ (໑)

[໖໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດໄຕຍະ)

ພິກຂຸເປັນຜູ້ມີພົມມະຈັນ (ຍ້ອນເຫັນໂທດ) ໃນກາມທັງຫຼາຍ
ຊື່ວ່າເປັນຜູ້ສັນໂດດ ຜູ້ຄາຍຕັນຫາແລ້ວ
ມີສະຕິທຸກເມື່ອ ຮູ້ທຳທັງຫຼາຍແລ້ວດັບກິເລດໄດ້
ພິກຂຸນັ້ນຊື່ວ່າບໍ່ມີຄວາມຫວັ່ນໄຫວ (໔)

[໖໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ພິກຂຸນັ້ນຊື່ວ່າຮູ້ແຈ້ງສ່ວນສຸດທັງ ໔ ດ້ານແລ້ວ

ບໍ່ຍຶດຕິດໃນທ່າມກາງດ້ວຍມັນຕາ
ເຮົາຮຽກພິກຂຸນັ້ນວ່າເປັນມະຫາບຸຣຸດ
ພິກຂຸນັ້ນຊື່ວ່າລ່ວງພົ້ນເຄື່ອງຮ້ອຍຮັດໃນໂລກນີ້ໄດ້ (໓)

**ຕິດສະເມດໄຕຍະມານະວະປັນຫາທີ ໘ ຈົບ**

## ໓. ປຸນນະກະມານະວະປັນຫາ

## ວ່າດ້ວຍປັນຫາຂອງປຸນນະກະມານົບ

[໒໗] (ທ່ານປຸນນະກະທູນຖາມ ດັ່ງນີ້)

ຂ້າພຣະອົງມີປັນຫາຈະທູນຖາມ ຈຶ່ງມາເຝົ້າພຣະອົງ
ຜູ້ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ຜູ້ມີປົກກະຕິເຫັນມູນ
ຣືສີ ມະນຸຊະ ກະສັດ ແລະພາມຈຳນວນຫຼາຍໃນໂລກນີ້
ອາໄສອັນໃດ ຈຶ່ງພາກັນບູຊາຍັນແກ່ເທວະດາທັງຫຼາຍ
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມປັນຫານັ້ນ
ຂໍພຣະອົງໂຜດຕັດບອກປັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ (໑)

[໒໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ)

ຣືສີ ມະນຸຊະ ກະສັດ ພາມບາງພວກເຫຼົ່ານີ້
ຈຳນວນຫຼາຍໃນໂລກນີ້ ພາກັນບູຊາຍັນແກ່ເທວະດາທັງຫຼາຍ
ປຸນນະກະ ຊົນເຫຼົ່ານັ້ນ ຫວັງຄວາມເປັນແນວນີ້
ອາໄສຊະຣາຈຶ່ງພາກັນບູຊາຍັນ (໒)

[໓໐] (ທ່ານປຸນນະກະທູນຖາມ ດັ່ງນີ້)

ຣືສີ ມະນຸຊະ ກະສັດ ພາມບາງພວກເຫຼົ່ານີ້
ຈຳນວນຫຼາຍໃນໂລກນີ້ ພາກັນບູຊາຍັນແກ່ເທວະດາທັງຫຼາຍ
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າຜູ້ນິຣະທຸກ
ຊົນເຫຼົ່ານັ້ນເປັນຜູ້ບໍ່ພະໝາດໃນການບູຊາຍັນ
ໄດ້ຂ້າມຊາດແລະຊະຣາໄດ້ແດ່ບໍ
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມປັນຫານັ້ນ
ຂໍພຣະອົງໂຜດຕັດບອກປັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ (໓)

[໗໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ)

ຊົນເຫຼົ່ານັ້ນຫວັງ ຊື່ນຊົມ ມຸ້ງຫວັງ ຈຶ່ງພາກັນບູຊາຍັນ
ຍ້ອນອາໄສລາບ ຈຶ່ງມຸ້ງຫວັງກາມ
ເຮົາຂໍກ່າວວ່າ ຊົນເຫຼົ່ານັ້ນຜູ້ປະກອບການບູຊາຍັນ
ເປັນຜູ້ກຳໜັດຍິນດີໃນພົບ ຂ້າມຊາດແລະຊະຣາໄປບໍ່ໄດ້ (໔)

[໗໘] (ທ່ານປຸນນະກະທູນຖາມ ດັ່ງນີ້)

ຂ້າແຕ່ພຣະອົງຜູ້ນິຣະທຸກ
ຖ້າຊົນເຫຼົ່ານັ້ນຜູ້ປະກອບການບູຊາຍັນ
ຂ້າມຊາດແລະຊະຣາໄປບໍ່ໄດ້ດ້ວຍຍັນທັງຫຼາຍ
ຂ້າແຕ່ພຣະອົງຜູ້ນິຣະທຸກ ເມື່ອເປັນເຊັ່ນນີ້
ໃຜນໍໃນເທວະໂລກແລະມະນຸດໂລກ ຂ້າມຊາດແລະຊະຣາໄດ້
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ (໕)

[໗໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ)

ເຮົາກ່າວວ່າ ບຸກຄົນໃດບໍ່ມີຄວາມຫວັ່ນໄຫວໃນໂລກໃດ ໆ
ຍ້ອນຮູ້ແຈ້ງຝັ່ງນີ້ ແລະ ຝັ່ງນັ້ນໃນໂລກ
ບຸກຄົນນັ້ນເປັນຜູ້ສະງົບ ປາສະຈາກຄວັນ ບໍ່ມີທຸກ
ບໍ່ມີຄວາມຫວັງ ຊື່ວ່າຂ້າມຊາດແລະຊະຣາໄດ້ແລ້ວ (໖)

**ປຸນນະກະມານະວະບັນຫາທີ ໖ ຈົບ**

## ໔. ເມດຕະຄູມານະວະບັນຫາ

## ວ່າດ້ວຍບັນຫາຂອງເມດຕະຄູມານົບ

[໗໔] (ທ່ານເມດຕະຄູທູນຖາມດັ່ງນີ້)

ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ
ຂ້າພຣະອົງຍ່ອມສຳຄັນພຣະອົງວ່າ ຊົງເປັນຜູ້ຈົບເວດ

ຊົງອົບຮົມພຣະອົງແລ້ວ ທຸກຫຼາຍຮູບແບບອັນໃດກໍຕາມໃນໂລກ
ທຸກເຫຼົ່ານີ້ເກີດມາຈາກບ່ອນໃດນໍ (໑)

[໗໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດຕະຄູ)

ທ່ານໄດ້ຖາມເຖິງແດນເກີດແຫ່ງທຸກກັບເຮົາແລ້ວ
ເຮົາຈະບອກແດນເກີດແຫ່ງທຸກນັ້ນແກ່ທ່ານຕາມທີ່ເຮົາຮູ້
ທຸກຫຼາຍຮູບແບບອັນໃດກໍຕາມໃນໂລກ
ລ້ວນເກີດມາຈາກອຸປະທິເປັນຕົ້ນເຫດ (໒)

[໗໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ຜູ້ໃດແລ ບໍ່ມີປັນຍາ ຍ່ອມກໍ່ອຸປະທິ
ຜູ້ນັ້ນຈັດວ່າເປັນຄົນຈ້ຳ ຍ່ອມເຂົ້າເຖິງທຸກເລື້ອຍ ໆ
ຍ້ອນແນວນັ້ນ ບຸກຄົນຮູ້ຢູ່ ເປັນຜູ້ມີປົກກະຕິພິຈາລະນາເຫັນທຸກວ່າ
ມີຊາດເປັນແດນເກີດ ບໍ່ຄວນກໍ່ອຸປະທິ (໓)

[໗໗] (ທ່ານເມດຕະຄູທູນຖາມວ່າ)

ພວກຂ້າພຣະອົງໄດ້ທູນຖາມບັນຫາໃດກັບພຣະອົງ
ພຣະຜູ້ມີພຣະພາກເຈົ້າໄດ້ຕັດບອກບັນຫານັ້ນແກ່ພວກຂ້າພຣະອົງແລ້ວ
ຂ້າພຣະອົງຂໍທູນຖາມບັນຫາອື່ນຕໍ່ໄປ
ຂໍພຣະອົງໂຜດຕັດບອກບັນຫານັ້ນດ້ວຍເທີ້ນ
ນັກປາດທັງຫຼາຍຈະຂ້າມໂອຄະ ຊາດ ຊະຣາ
ໂສກະແລະປະຣິເທວະໄດ້ແນວໃດນໍ
ພຣະອົງຜູ້ເປັນພຣະມຸນີ ຂໍໂຜດຕັດແກ້ບັນຫານັ້ນ
ແກ່ຂ້າພຣະອົງໃຫ້ແຈ່ມແຈ້ງດ້ວຍເທີ້ນ
ຍ້ອນທຳນັ້ນພຣະອົງຊົງຮູ້ແຈ້ງແລ້ວ (໔)

[໗໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດຕະຄູ)

ບຸກຄົນຮູ້ແຈ້ງທຳໃດແລ້ວ ມີສະຕິທ່ຽວໄປຢູ່
ເພື່ອຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້
ເຮົາຈັກກ່າວທຳ (ນັ້ນ) ທີ່ຮູ້ປະຈັກດ້ວຍຕົນເອງ
ໃນທຳທີ່ເຮົາເຫັນແລ້ວ ແກ່ທ່ານ (໕)

[໗໙] (ທ່ານເມດຕະຄູທູນຖາມວ່າ)

ຂ້າແຕ່ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຂ້າພຣະອົງພໍໃຈທຳອັນສູງສຸດນັ້ນທີ່ບຸກຄົນຮູ້ແຈ້ງແລ້ວ
ມີສະຕິທ່ຽວໄປຢູ່ ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້ (໖)

[໘໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດຕະຄູ)

ທ່ານຮູ້ທຳແນວໃດແນວໜຶ່ງ
ເຊິ່ງເປັນທຳຊັ້ນສູງ ຊັ້ນຕ່ຳແລະຊັ້ນກາງ
ທ່ານຈົ່ງບັນເທົາຄວາມເພີດເພີນ ຄວາມຖືໝັ້ນ
ແລະວິນຍານ ໃນທຳເຫຼົ່ານີ້ສາ ບໍ່ເພິ່ງຕັ້ງຢູ່ໃນພົບ (໗)

[໘໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ພິກຂຸຜູ້ມີປົກກະຕິຢູ່ແນວນີ້ ມີສະຕິ ບໍ່ຜະໝາດ
ຮູ້ແຈ້ງ ລະຄວາມຢຶດຖືວ່າເປັນຂອງເຮົາແລ້ວ
ທ່ຽວໄປຢູ່ ເພິ່ງລະຊາດ ຊະຣາ ໂສກະແລະປະຣິເທວະ
ອັນເປັນທຸກໃນອັດຕະພາບນີ້ໄດ້ແນ່ນອນ (໘)

[໘໔] (ທ່ານເມດຕະຄູທູນຖາມວ່າ)

ຂ້າພຣະອົງພໍໃຈພຣະວາຈານີ້ຂອງພຣະອົງ
ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ຂ້າແຕ່ພຣະໂຄດົມ
ທຳທີ່ປາສະຈາກອຸປະທິ ພຣະອົງຕັດໄວ້ດີແລ້ວ
ພຣະຜູ້ມີພຣະພາກເຈົ້າຊົງລະທຸກໄດ້ແລ້ວເປັນແນ່
ຍ້ອນທຳນີ້ ພຣະອົງຊົງຮູ້ແຈ້ງແລ້ວ (໙)

[໘໓] (ທ່ານເມດຕະຄູທູນຖາມວ່າ)

ພຣະອົງຜູ້ເປັນພຣະມຸນີຕັດສອນຊົນເຫຼົ່າໃດບໍ່ຢຸດຢ່ອນ
ຊົນແມ່ນເຫຼົ່ານັ້ນເພິ່ງລະທຸກໄດ້ເປັນແນ່
ຍ້ອນແນວນັ້ນ ຂ້າພຣະອົງຈຶ່ງມາພົບພຣະຜູ້ມີພຣະພາກເຈົ້າຜູ້ນາຄະ
ຂໍນະມັດສະການພຣະອົງ (ໂດຍຫວັງວ່າ) ພຣະຜູ້ມີພຣະພາກເຈົ້າ
ເພິ່ງຕັດສອນຂ້າພຣະອົງບໍ່ຢຸດຢ່ອນແດ່ (໑໐)

[໗໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ບຸກຄົນທີ່ທ່ານຮູ້ຈັກວ່າເປັນພາມຜູ້ຈົບເວດ
ບໍ່ມີເຄື່ອງກັງວົນ ບໍ່ຂ້ອງໃນກາມະພົບ
ຂ້າມໂອຄະໄດ້ແລ້ວໂດຍແທ້ ແລະເປັນຜູ້ຂ້າມເຖິງຝັ່ງ
ບໍ່ມີກິເລດດັ່ງຕະປູຕຶງຈິດ ໝົດຄວາມສົງໄສແລ້ວ (໑໑)

[໗໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ນໍຣະຊົນໃດໃນບ່ອນນີ້ ເປັນຜູ້ມີປັນຍາ ຈົບເວດ
ສະລັດເຄື່ອງຂ້ອງໃນພົບນ້ອຍພົບໃຫຍ່ນີ້ໄດ້ແລ້ວ
ນໍຣະຊົນນັ້ນເປັນຜູ້ຄາຍຕັນຫາແລ້ວ ບໍ່ມີທຸກ ບໍ່ມີຄວາມຫວັງ
ເຮົາກ່າວວ່າ ນໍຣະຊົນນັ້ນຂ້າມຊາດແລະຊະຣາໄດ້ແລ້ວ (໑໒)

**ເມດຕະຄູມານະວະບັນຫາທີ ໔ ຈົບ**

## ໕. ໂທຕະກະມານະວະບັນຫາ
## ວ່າດ້ວຍບັນຫາຂອງໂທຕະກະມານົບ

[໗໖] (ທ່ານໂທຕະກະທູນຖາມ ດັ່ງນີ້)

ຂ້າແຕ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມພຣະອົງ
ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ
ຂ້າແຕ່ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຂ້າພຣະອົງມຸ້ງຫວັງຈະຮັບຟັງພຣະວາຈາຂອງພຣະອົງຢ່າງຍິ່ງ
ບຸກຄົນໄດ້ຟັງພຣະສຸຣະສຽງຂອງພຣະອົງແລ້ວ
ເພິ່ງສຶກສາທຳເປັນເຫດດັບກິເລດເພື່ອຕົນ (໑)

[໗໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ)

ຖ້າເຊັ່ນນັ້ນ ທ່ານຜູ້ມີປັນຍາຮັກສາຕົນ
ມີສະຕິ ຈົ່ງກະທຳຄວາມພຽນໃນບ່ອນນີ້ແລ
ບຸກຄົນໄດ້ຟັງສຽງຈາກບ່ອນນີ້ແລ້ວ
ເພິ່ງສຶກສາທຳເປັນເຫດດັບກິເລດເພື່ອຕົນ (໒)

[໗໗] (ທ່ານໂທຕະກະທູນຖາມວ່າ)

ຂ້າພຣະອົງຍ່ອມເຫັນພຣະອົງຜູ້ບໍ່ມີເຄື່ອງກັງວົນ
ເປັນພາມ ສະເດັດຈາຣິກຢູ່ໃນເທວະໂລກແລະມະນຸດໂລກ
ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ
ຂ້າພຣະອົງຂໍນະມັດສະການພຣະອົງນັ້ນ
ຂ້າແຕ່ພຣະອົງຜູ້ສັກກະ ຂໍພຣະອົງໂຜດປົດເປື້ອງ
ຂ້າພຣະອົງຈາກຄວາມສົງໄສທັງຫຼາຍເທີ້ນ (໖)

[໗໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ໂທຕະກະ ເຮົາບໍ່ສາມາດປົດເປື້ອງຜູ້ໃດ
ຜູ້ມີຄວາມສົງໄສໃນໂລກໄດ້
ແຕ່ທ່ານເມື່ອຮູ້ທົ່ວເຖິງທຳອັນປະເສີດ
ກໍຈະເພິ່ງຂ້າມໂອຄະນີ້ໄດ້ເອງດ້ວຍປະການແນວນີ້ (໔)

[໘໐] (ທ່ານໂທຕະກະທູນຖາມວ່າ)

ຂ້າແຕ່ ພຣະອົງຜູ້ປະເສີດ
ຂໍພຣະອົງຊົງພຣະກະລຸນາຕັດສອນວິເວກທຳ
ທີ່ຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້
ແລະໂດຍວິທີທີ່ຂ້າພຣະອົງບໍ່ຂັດຂ້ອງເໝືອນອາກາດ
ຂ້າພຣະອົງຈະເພິ່ງສະງົບຢູ່ໃນບ່ອນນີ້ແລ
ເປັນຜູ້ບໍ່ຢຶດອາໄສ ທ່ຽວໄປຢູ່ (໕)

[໘໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ)

ບຸກຄົນຜູ້ຮູ້ແຈ້ງຄວາມສະງົບໃດແລ້ວ ມີສະຕິ
ທ່ຽວໄປຢູ່ ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້
ເຮົາຈັກກ່າວຄວາມສະງົບນັ້ນ ທີ່ຮູ້ປະຈັກດ້ວຍຕົນເອງ
ໃນທຳທີ່ເຮົາເຫັນແລ້ວ ແກ່ທ່ານ (໖)

[໘໔] (ທ່ານໂທຕະກະທູນຖາມວ່າ)

ຂ້າແຕ່ ພຣະອົງຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

ຂ້າພຣະອົງພໍໃຈຄວາມສະງົບອັນສູງສຸດນັ້ນ
ທີ່ບຸກຄົນຮູ້ແຈ້ງແລ້ວ ມີສະຕິທ່ຽວໄປຢູ່
ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້ (໗)

[໙໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ)

ທ່ານຮູ້ແຈ້ງທຳແນວໃດແນວໜຶ່ງ
ເຊິ່ງເປັນທຳຊັ້ນສູງ ຊັ້ນຕ່ຳແລະຊັ້ນກາງ
ທ່ານຮູ້ແຈ້ງທຳນັ້ນວ່າເປັນເຄື່ອງຂ້ອງໃນໂລກແລ້ວ
ຢ່າໄດ້ກໍ່ຕັນຫາເພື່ອພົບນ້ອຍແລະພົບໃຫຍ່ເລີຍ (໘)

**ໂທຕະກະມານະວະປັນຫາທີ ໕ ຈົບ**

## ໖. ອຸປະສີວະມານະວະປັນຫາ

## ວ່າດ້ວຍປັນຫາຂອງອຸປະສີວະມານົບ

[໙໔] (ທ່ານອຸປະສີວະທູນຖາມ ດັ່ງນີ້)

ຂ້າແຕ່ ພຣະອົງຜູ້ສັກກະ ຂ້າພຣະອົງຜູ້ດຽວ
ບໍ່ໄດ້ອາໄສ (ຜູ້ໃດຫຼືສິ່ງໃດ ໆ)
ຈຶ່ງບໍ່ສາມາດຂ້າມຫ້ວງກິເລດອັນຍິ່ງໃຫຍ່ໄດ້
ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ
ຂໍພຣະອົງໂຜດຕັດບອກອາລົມ
ທີ່ຂ້າພຣະອົງໄດ້ອາໄສແລ້ວ ເພິ່ງຂ້າມຫ້ວງກິເລດນີ້ໄດ້ (໑)

[໙໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ)

ທ່ານຈົ່ງມີສະຕິ ເພ່ງພິຈາລະນາອາກິນຈັນຍາຍະຕະນະສະມາບັດ
ຍຶດເອົາເປັນອາລົມວ່າ ບໍ່ມີອັນໃດດັ່ງນີ້ແລ້ວ
ກໍຈະຂ້າມຫ້ວງກິເລດໄດ້ ທ່ານຈົ່ງລະກາມທັງຫຼາຍ
ເປັນຜູ້ງົດເວັ້ນຈາກຄວາມສົງໄສທັງຫຼາຍ
ພິຈາລະນາຄວາມສິ້ນຕັນຫາ ທັງຄືນທັງວັນ (໒)

[໙໖] (ທ່ານອຸປະສີວະທູນຖາມ ດັ່ງນີ້)

ບຸກຄົນໃດຄາຍຣາຄະໃນກາມທັງປວງ
ລະສະມາບັດອື່ນ ອາໄສແຕ່ອາກິນຈັນຍາຍະຕະນະສະມາບັດ
ນ້ອມໃຈໄປໃນສັນຍາວິໂມກຊັ້ນສູງ
ບຸກຄົນນັ້ນບໍ່ຫວັ່ນໄຫວ ດຳຣົງຢູ່ໃນພົມມະໂລກ
ຊັ້ນອາກິນຈັນຍາຍະຕະນະນັ້ນໄດ້ຫຼື (໓)

[໙໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ)

ບຸກຄົນໃດຄາຍຣາຄະໃນກາມທັງປວງ
ລະສະມາບັດອື່ນ ອາໄສແຕ່ອາກິນຈັນຍາຍະຕະນະສະມາບັດ
ນ້ອມໃຈໄປໃນສັນຍາວິໂມກຊັ້ນສູງ
ບຸກຄົນນັ້ນບໍ່ຫວັ່ນໄຫວ ດຳຣົງຢູ່ໃນພົມມະໂລກ
ຊັ້ນອາກິນຈັນຍາຍະຕະນະນັ້ນໄດ້ (໔)

[໙໘] (ທ່ານອຸປະສີວະທູນຖາມວ່າ)

ຂ້າແຕ່ ພຣະອົງຜູ້ມີສະມັນຕະຈັກຂຸ
ຖ້າບຸກຄົນນັ້ນບໍ່ຫວັ່ນໄຫວ ດຳຣົງຢູ່ໃນພົມມະໂລກນັ້ນນານປີແລ້ວ
ບຸກຄົນນັ້ນເປັນຜູ້ຫຼຸດພົ້ນແລ້ວ
ມີຄວາມສະງົບເຢັນຢູ່ໃນພົມມະໂລກນັ້ນ ໆ ບໍ
ຫຼື ວ່າວິນຍານຂອງບຸກຄົນນັ້ນຈະເພິ່ງຈຸຕິອີກ (໕)

[໙໙] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ)
ແປວໄຟຖືກກຳລັງລົມພັດໄປ
ຍ່ອມດັບ ກຳນົດບໍ່ໄດ້ ສັນໃດ
ມຸນີພົ້ນແລ້ວຈາກນາມກາຍ ຍ່ອມດັບໄປ
ກຳນົດບໍ່ໄດ້ ສັນນັ້ນ (໖)

[໑໐໐] (ທ່ານອຸປະສີວະທູນຖາມວ່າ)
ມຸນີນັ້ນ ເຖິງຄວາມສະຫຼາຍໄປ ຫຼື ວ່າບໍ່ມີ
ຫຼືວ່າບໍ່ແຕກທຳລາຍຍ້ອນມີຄວາມແນ່ນອນ
ພຣະອົງຜູ້ເປັນພຣະມຸນີ ໂຜດພະຍາກອນບັນຫານັ້ນ
ແກ່ຂ້າພຣະອົງໃຫ້ແຈ່ມແຈ້ງດ້ວຍເທີ້ນ
ຍ້ອນທຳນັ້ນພຣະອົງຊົງຮູ້ແຈ້ງແລ້ວ (໗)

[໑໐໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ)

ມຸນີຜູ້ເຖິງຄວາມສະຫຼາຍໄປ ຍ່ອມບໍ່ມີ (ອັນໃດ) ເປັນປະມານ
ຊົນທັງຫຼາຍເພິ່ງວ່າກ່າວມຸນີນັ້ນດ້ວຍກິເລດໃດ
ກິເລດນັ້ນຍ່ອມບໍ່ມີແກ່ມຸນີນັ້ນ
(ຍ້ອນ) ເມື່ອມຸນີນັ້ນຖອນທຳທັງປວງໄດ້ເດັດຂາດແລ້ວ
ແມ່ນຄັນລອງແຫ່ງວາທະທັງປວງ
ທ່ານກໍຖອນໄດ້ເດັດຂາດແລ້ວ (ຄືກັນ) (໗)

**ອຸປະສີວະມານະວະປັນຫາທີ ໖ ຈົບ**

## ໗. ນັນທະມານະວະປັນຫາ

## ວ່າດ້ວຍປັນຫາຂອງນັນທະມານົບ

[໑໐໔] (ທ່ານນັນທະທູນຖາມ ດັ່ງນີ້)

ຊົນທັງຫຼາຍກ່າວວ່າ ມຸນີທັງຫຼາຍມີຢູ່ໃນໂລກ
ຄຳກ່າວນີ້ນັ້ນເປັນແນວໃດ
ຊົນທັງຫຼາຍ ຮຽກບຸກຄົນຜູ້ເປັນໄປດ້ວຍຍານ
ຫຼືວ່າຮຽກບຸກຄົນຜູ້ເປັນໄປດ້ວຍຄວາມເປັນຢູ່ວ່າ ເປັນມຸນີ (໑)

[໑໐໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ນັນທະ ຊົນທັງຫຼາຍຜູ້ສະຫຼາດໃນໂລກນີ້
ບໍ່ຮຽກບຸກຄົນວ່າເປັນມຸນີ ຍ້ອນໄດ້ເຫັນຍ້ອນໄດ້ຟັງແລະຍ້ອນໄດ້ຮູ້
ເຮົາຮຽກເຫຼົ່າຊົນຜູ້ກຳຈັດເສນາມານໄດ້ແລ້ວ
ຜູ້ບໍ່ມີຄວາມທຸກ ບໍ່ມີຄວາມຫວັງ ທ່ຽວຈາຣິກຢູ່ວ່າ ເປັນມຸນີ (໔)

[໑໐໔] (ທ່ານນັນທະທູນຖາມ ດັ່ງນີ້)

ສະມະນະພາມບາງພວກຍ່ອມກ່າວຄວາມບໍລິສຸດ
ຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່
ຍ່ອມກ່າວຄວາມບໍລິສຸດຍ້ອນສິນວັດແດ່
ຍ່ອມກ່າວຄວາມບໍລິສຸດຍ້ອນພິທີຫຼາກຫຼາຍແດ່

ຂ້າແຕ່ພຣະຜູ້ມີພຣະພາກເຈົ້າຜູ້ນິຣະທຸກ
ສະມະນະພາມພວກນັ້ນເປັນຜູ້ປະພຶດຕົນເຄັ່ງຄັດ
ໃນຫຼັກການຂອງຕົນນັ້ນ ຂ້າມຊາດແລະຊະຣາໄດ້ແດ່ບໍ
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ (໓)

[໑໐໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນັນທະ)

ສະມະນະພາມບາງພວກຍ່ອມກ່າວຄວາມມົດຈິດ
ຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່
ຍ່ອມກ່າວຄວາມມົດຈິດຍ້ອນສີນວັດແດ່
ຍ່ອມກ່າວຄວາມມົດຈິດຍ້ອນພິທີຫຼາກຫຼາຍແດ່
ສະມະນະພາມພວກນັ້ນ
ແມ່ນປະພຶດຕົນເຄັ່ງຄັດຢູ່ໃນຫຼັກການຂອງຕົນນັ້ນ ກໍຈິງ
ແຕ່ເຮົາກ່າວວ່າ ພວກເຂົາຍັງຂ້າມຊາດແລະຊະຣາໄປບໍ່ໄດ້ (໔)

[໑໐໕] (ທ່ານນັນທະທູນຖາມ ດັ່ງນີ້)

ສະມະນະພາມບາງພວກຍ່ອມກ່າວຄວາມມົດຈິດ
ຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່
ຍ່ອມກ່າວຄວາມມົດຈິດຍ້ອນສີນວັດແດ່
ຍ່ອມກ່າວຄວາມມົດຈິດຍ້ອນພິທີຫຼາກຫຼາຍແດ່
ຫາກພຣະອົງຜູ້ເປັນພຣະມຸນີຕັດວ່າ
ສະມະນະພາມພວກນັ້ນຍັງຂ້າມຫ້ວງກິເລດບໍ່ໄດ້
ຂ້າແຕ່ພຣະອົງຜູ້ນິຣະທຸກ ເມື່ອເປັນເຊັ່ນນັ້ນ
ໃຜນໍໃນເທວະໂລກແລະມະນຸດໂລກ ຊື່ວ່າຂ້າມຊາດແລະຊະຣາໄປໄດ້
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ (໕)

[໑໐໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນັນທະ)

ເຮົາບໍ່ກ່າວວ່າ ສະມະນະພາມທັງໝົດ
ຖືກຊາດແລະຊະຣາໂອບລ້ອມ ນໍຣະຊົນເຫຼົ່າໃດໃນໂລກນີ້
ລະຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ອາລົມທີ່ໄດ້ຮັບຮູ້

ຫຼືສິນວັດໄດ້ທັງໝົດ ທັງລະພິທີຫຼາກຫຼາຍທັງປວງ
ກໍານົດຮູ້ຕັນຫາໄດ້ແລ້ວ ເປັນຜູ້ໝົດອາສະວະ
ເຮົາກ່າວວ່ານໍຣະຊົນເຫຼົ່ານັ້ນແລ
ຊື່ວ່າເປັນຜູ້ຂ້າມຫ້ວງກິເລດໄດ້ແລ້ວ (໖)

[໑໐໗] (ທ່ານນັນທະຂາບທູນວ່າ)

ຂ້າພຣະອົງພໍໃຈພຣະດໍາຣັດນີ້ຂອງພຣະອົງ
ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ຂ້າແຕ່ພຣະໂຄດົມ
ທໍາທີ່ປາສະຈາກອຸປະທິ ພຣະອົງຕັດໄວ້ດີແລ້ວ
ນໍຣະຊົນເຫຼົ່າໃດໃນໂລກນີ້ ລະຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ
ອາລົມທີ່ໄດ້ຮັບຮູ້ຫຼືສິນວັດໄດ້ທັງໝົດ
ທັງລະພິທີຫຼາກຫຼາຍທັງປວງ ກໍານົດຮູ້ຕັນຫາໄດ້ແລ້ວ
ເປັນຜູ້ໝົດອາສະວະ ແມ່ນຂ້າພຣະອົງກໍກ່າວວ່າ
ນໍຣະຊົນເຫຼົ່ານັ້ນ ຊື່ວ່າເປັນຜູ້ຂ້າມຫ້ວງກິເລດໄດ້ແລ້ວ (໗)

**ນັນທະມານະວະປັນຫາທີ ໗ ຈົບ**

## ໘. ເຫມະກະມານະວະປັນຫາ

## ວ່າດ້ວຍປັນຫາຂອງເຫມະກະມານົບ

[໑໐໘] (ທ່ານເຫມະກະທູນຖາມ ດັ່ງນີ້)

ກ່ອນແຕ່ສາດສະໜາຂອງພຣະໂຄດົມ
ອາຈານເຈົ້າລັດທິເຫຼົ່າໃດເຄີຍພະຍາກອນແກ່ຂ້າພຣະອົງວ່າ
ເຫດນີ້ໄດ້ເປັນມາແລ້ວແນວນີ້ ຈັກເປັນແນວນີ້
ຄໍາພະຍາກອນທັງໝົດນັ້ນເປັນຄໍາທີ່ເຊື່ອສືບຕໍ່ກັນມາ
ຄໍາພະຍາກອນທັງໝົດນັ້ນມີແຕ່ຈະເຮັດໃຫ້ນຶກໄປຕ່າງ ໆ
ຂ້າພຣະອົງຈຶ່ງບໍ່ຍິນດີໃນຄໍາພະຍາກອນນັ້ນ (໑)

[໑໑໐] (ທ່ານເຫມະກະທູນຖາມວ່າ)

ຂ້າແຕ່ ພຣະມຸນີ ບຸກຄົນຮູ້ແຈ້ງທໍາໃດແລ້ວ
ມີສະຕິ ທ່ຽວໄປຢູ່ ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້

ຂໍພຣະອົງໂຜດຕັດບອກທຳ (ນັ້ນ)
ທີ່ເປັນເຄື່ອງກຳຈັດຕັນຫາ ແກ່ຂ້າພຣະອົງເທີ້ນ (໔)

[໑໑໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ເຫມະກະ ນິບພານບົດອັນບໍ່ຜັນປ່ຽນ
ເປັນເຄື່ອງກຳຈັດຄວາມກຳໜັດດ້ວຍອຳນາດຄວາມພໍໃຈ
ໃນປິຍະຮູບທັງຫຼາຍທີ່ໄດ້ເຫັນ ໄດ້ຍິນໄດ້ຮັບຮູ້ແລະໄດ້ຮູ້ ໃນໂລກນີ້ (໑)

[໑໑໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ຊົນເຫຼົ່າໃດຜູ້ມີສະຕິ ຮູ້ນິບພານນັ້ນແລ້ວ
ເຫັນທຳ ດັບກິເລດໄດ້ແລ້ວ
ຊົນເຫຼົ່ານັ້ນ ເປັນຜູ້ສະງົບທຸກເມື່ອ
ຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້ແລ້ວ (໘)

**ເຫມະກະມານະວະປັນຫາທີ ໗ ຈົບ**

# ໘. ໂຕເທີຍຍະມານະວະປັນຫາ

## ວ່າດ້ວຍປັນຫາຂອງໂຕເທີຍຍະມານົບ

[໑໑໑] (ທ່ານໂຕເທີຍຍະທູນຖາມ ດັ່ງນີ້)

ກາມທັງຫຼາຍບໍ່ຢູ່ໃນບຸກຄົນໃດ
ຕັນຫາບໍ່ມີແກ່ບຸກຄົນໃດ
ແລະບຸກຄົນໃດຂ້າມຄວາມສົງໄສໄດ້ແລ້ວ
ວິໂມກຂອງບຸກຄົນນັ້ນເປັນເຊັ່ນໃດ (໑)

[໑໑໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂຕເທີຍຍະ)

ກາມທັງຫຼາຍບໍ່ຢູ່ໃນບຸກຄົນໃດ
ຕັນຫາບໍ່ມີແກ່ບຸກຄົນໃດ
ແລະບຸກຄົນໃດຂ້າມຄວາມສົງໄສໄດ້ແລ້ວ
ວິໂມກອື່ນຂອງບຸກຄົນນັ້ນຍ່ອມບໍ່ມີ (໔)

[໑໑໕] (ທ່ານໂຕເທີຍຍະທູນຖາມວ່າ)

ບຸກຄົນນັ້ນເປັນຜູ້ບໍ່ມີຄວາມຫວັງ ຫຼືວ່າຍັງຫວັງຢູ່
ບຸກຄົນນັ້ນເປັນຜູ້ມີປັນຍາ ຫຼືວ່າຍັງມີຄວາມດຳຣິດ້ວຍປັນຍາ
ຂ້າແຕ່ພຣະອົງຜູ້ສັກກະ ຂ້າພຣະອົງຈະເພິ່ງຮູ້ຈັກພຣະມຸນີໄດ້ແນວໃດ
ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ
ຂໍພຣະອົງໂຜດຕັດບອກບັນຫານັ້ນ
ແກ່ຂ້າພຣະອົງໃຫ້ແຈ່ມແຈ້ງດ້ວຍເທີ້ນ (໓)

[໑໑໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ບຸກຄົນນັ້ນເປັນຜູ້ບໍ່ມີຄວາມຫວັງ ທັງບໍ່ຫວັງ
ບຸກຄົນນັ້ນເປັນຜູ້ມີປັນຍາ ແຕ່ບໍ່ມີຄວາມດຳຣິດ້ວຍປັນຍາ
ໂຕເທີຍຍະ ທ່ານຈົ່ງຮູ້ຈັກບຸກຄົນຜູ້ບໍ່ມີເຄື່ອງກັງວົນ
ຜູ້ບໍ່ຂ້ອງໃນກາມແລະພົບວ່າເປັນມຸນີ ແນວນີ້ (໔)

**ໂຕເທີຍຍະມານະວະບັນຫາທີ ໙ ຈົບ**

# ໑໐. ກັບປະມານະວະບັນຫາ

## ວ່າດ້ວຍບັນຫາຂອງກັບປະມານົບ

[໑໑໗] (ທ່ານກັບປະທູນຖາມ ດັ່ງນີ້)

ຂ້າແຕ່ພຣະອົງຜູ້ນິຣະທຸກ
ຂໍພຣະອົງໂຜດຕັດບອກບ່ອນເພິ່ງຂອງເຫຼົ່າສັດ
ຜູ້ດຳຣົງຢູ່ທ່າມກາງສະ
ຜູ້ຖືກຊະຣາແລະມັດຈຸຣາດຄອບງຳ
ໃນຂະນະເກີດຫ້ວງນ້ຳອັນເປັນມະຫັນຕະໄພ
ອັນໜຶ່ງ ຂໍພຣະອົງໂຜດຕັດບອກບ່ອນເພິ່ງ
ໂດຍວິທີທີ່ທຸກນີ້ຈະບໍ່ເພິ່ງມີແກ່ຂ້າພຣະອົງອີກ (໑)

[໑໑໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ກັບປະ ເຮົາຈະບອກບ່ອນເພິ່ງຂອງເຫຼົ່າສັດ

ຜູ້ດຳຣົງຢູ່ທ່າມກາງສະ
ຜູ້ຖືກຊະຣາແລະມັດຈຸຣາດຄອບງຳ
ໃນຂະນະເກີດຫ້ວງນ້ຳອັນເປັນມະຫັນຕະໄພແກ່ທ່ານ (໘)

[໑໑໙] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ເຮົາຮຽກນິບພານ ເຊິ່ງບໍ່ມີເຄື່ອງກັງວົນ
ບໍ່ມີເຄື່ອງຍຶດໝັ້ນນີ້ນັ້ນ ວ່າເປັນບ່ອນເພິ່ງອັນບໍ່ມີບ່ອນເພິ່ງອື່ນຍິ່ງກວ່າ
(ຍ້ອນ) ນິບພານເປັນບ່ອນສິ້ນໄປແຫ່ງຊະຣາແລະມັດຈຸຣາດ

[໑໘໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ຊົນເຫຼົ່າໃດມີສະຕິຮູ້ນິບພານນັ້ນແລ້ວ
ເຫັນທຳ ດັບກິເລດໄດ້ແລ້ວ
ຊົນເຫຼົ່ານັ້ນຈຶ່ງບໍ່ໄປຕາມອຳນາດມານ ບໍ່ໄປບຳຣຸງມານ (໑)

**ກັບປະມານະວະບັນຫາທີ ໑໐ ຈົບ**

## ໑໑. ຊະຕຸກັນນິມານະວະບັນຫາ

## ວ່າດ້ວຍບັນຫາຂອງຊະຕຸກັນນິມານົບ

[໑໘໑] (ທ່ານຊະຕຸກັນນິທູນຖາມ ດັ່ງນີ້)

ຂ້າແຕ່ ພຣະວີຣະ ຂ້າພຣະອົງໄດ້ຍິນວ່າ
ພຣະອົງບໍ່ມີຄວາມຕ້ອງການກາມ ລ່ວງພົ້ນຫ້ວງກິເລດ
ຈຶ່ງມາເຝົ້າເພື່ອທູນຖາມພຣະອົງຜູ້ບໍ່ມີກາມ
ຂ້າແຕ່ພຣະສະຫັດສະເນດ ຂໍພຣະອົງໂຜດຕັດບອກສັນຕິບົດ
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກທຳ
ອັນແທ້ຈິງນັ້ນແກ່ຂ້າພຣະອົງ (໑)

[໑໘໘] (ທ່ານຊະຕຸກັນນິທູນຖາມວ່າ)

ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງຄອບງຳກາມທັງຫຼາຍ
ດ້ວຍພຣະເດດ ຊົງເຄື່ອນໄຫວ (ອິລິຍາບົດ) ຢູ່
ເໝືອນດວງອາທິດມີແສງສະຫວ່າງ ສ່ອງແສງປົກຄຸມທົ່ວປະຖະພີ

ພຣະອົງຜູ້ມີພຣະປັນຍາດັ່ງພູຣີ
ຂໍພຣະອົງໂຜດຕັດບອກທຳເປັນເຄື່ອງລະຊາດ
ແລະຊະຣາໃນໂລກນີ້ ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງ
ແກ່ຂ້າພຣະອົງຜູ້ມີປັນຍາໜ້ອຍດ້ວຍເທີ້ນ (໘)

[໑໘໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຊະຕຸກັນນິ)
ທ່ານຈົ່ງກຳຈັດຄວາມຕິດໃຈໃນກາມທັງຫຼາຍສາ
ທ່ານເຫັນເນກຂຳມະໂດຍຄວາມກະເສມແລ້ວ
ຄວນສະລັດເຄື່ອງກັງວົນທີ່ຢຶດຖື
ຫຼືວ່າເຄື່ອງກັງວົນຢ່າໄດ້ມີແກ່ທ່ານ (໓)

[໑໘໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)
ທ່ານຈົ່ງເຮັດກິເລດທີ່ຜາຣົບສັງຂານໃນສ່ວນເບື້ອງຕົ້ນໃຫ້ເຫືອດແຫ້ງໄປ
ເຄື່ອງກັງວົນທີ່ຜາຣົບສັງຂານໃນສ່ວນພາຍຫຼັງຢ່າໄດ້ມີແກ່ທ່ານ
ຖ້າທ່ານຈັກບໍ່ຖືສັງຂານໃນສ່ວນທ່າມກາງໄວ້
ກໍຈັກເປັນຜູ້ເຂົ້າໄປສະງົບ ທ່ຽວໄປ (໔)

[໑໘໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ພາມ ອາສະວະທັງຫຼາຍ
ອັນເປັນເຫດໃຫ້ເຖິງອຳນາດແຫ່ງມັດຈຸ ບໍ່ມີແກ່ບຸກຄົນນັ້ນ
ຜູ້ຄາຍຄວາມຕິດໃຈໃນນາມຮູບ ໂດຍປະການທັງປວງ (໕)

**ຊະຕຸກັນນິມານະວະປັນຫາທີ ໑໑ ຈົບ**

## ໑໘. ພັດທະຣາວຸດມານະວະປັນຫາ

## ວ່າດ້ວຍປັນຫາຂອງ ພັດທະຣາວຸດມານົບ

[໑໘໖] (ທ່ານພັດທະຣາວຸດທູນຖາມ ດັ່ງນີ້)

ຂ້າພຣະອົງຂໍທູນອາຣາດທະນາພຣະອົງ
ຜູ້ຊົງລະຫ້ວງນ້ຳຄືອາໄລໄດ້ ຕັດຕັນຫາໄດ້
ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ
ຊົງລະຄວາມເພີດເພີນໄດ້ ຂ້າມຫ້ວງກິເລດໄດ້

ຫຼຸດພົ້ນແລ້ວ ລະການກຳນົດ ມີພຣະປັນຍາດີ
ຊົນທັງຫຼາຍເມື່ອໄດ້ຟັງພຣະດຳຣັດຂອງພຣະອົງຜູ້ນາຄະແລ້ວ
ຈຶ່ງຈັກກັບໄປຈາກບ່ອນນີ້ (໑)

[໑໔໗] (ທ່ານພັດທະຣາວຸດທູນຖາມວ່າ)

ຂ້າແຕ່ພຣະວີຣະ ຊົນຕ່າງ ໆ ຈາກຊົນນະບົດທັງຫຼາຍ
ມາຊຸມນຸມກັນ (ໃນບ່ອນນີ້) ຫວັງເປັນຢ່າງຍິ່ງ (ທີ່ຈະໄດ້ຟັງ)
ພຣະດຳຣັດຂອງພຣະອົງ ຂໍພຣະອົງໂຜດພະຍາກອນ (ປັນຫາ)
ແກ່ຊົນເຫຼົ່ານັ້ນໃຫ້ແຈ່ມແຈ້ງດ້ວຍເທີ້ນ
ຍ້ອນວ່າທຳນີ້ພຣະອົງຊົງຮູ້ແຈ້ງແລ້ວ (໔)

[໑໔໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພັດທະຣາວຸດ)
ນໍຣະຊົນຄວນທຳລາຍເຄື່ອງຢຶດໝັ້ນທັງປວງ
ທັງຊັ້ນສູງ ຊັ້ນຕ່ຳແລະຊັ້ນກາງ
ຍ້ອນສັດທັງຫຼາຍເຂົ້າໄປຢຶດຖືຂັນໃດ ໆ ໃນໂລກ
ມານຍ່ອມຕິດຕາມສັດຍ້ອນສິ່ງທີ່ຢຶດຖືນັ້ນ ໆ ແລ (໓)

[໑໔໙] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ຍ້ອນແນວນັ້ນ ພິກຂຸເມື່ອຮູ້ແຈ້ງເພ່ງພິຈາລະນາໝູ່ສັດນີ້
ຜູ້ຕິດຢູ່ໃນບ້ວງແຫ່ງມັດຈຸຣາດວ່າ ເປັນຜູ້ຂ້ອງຢູ່ໃນເຄື່ອງຢຶດໝັ້ນ
ຄວນເປັນຜູ້ມີສະຕິ ບໍ່ເພິ່ງເຂົ້າໄປຢຶດຖືເຄື່ອງກັງວົນໃນໂລກທັງປວງ (໔)

**ພັດທະຣາວຸດມານະວະປັນຫາທີ ໑໔ ຈົບ**

## ໑໓. ອຸທະຍະມານະວະປັນຫາ

## ວ່າດ້ວຍປັນຫາຂອງອຸໄທມານົບ

[໑໓໐] (ທ່ານອຸໄທທູນຖາມ ດັ່ງນີ້)

ຂ້າພຣະອົງມີປັນຫາທີ່ຈະທູນຖາມ
ຈຶ່ງມາເຝົ້າພຣະອົງຜູ້ຊົງມີຊານ ປາສະຈາກທຸລີ
ປະທັບນັ່ງຢູ່ ຜູ້ຊົງເຮັດກິດສຳເລັດແລ້ວ

ບໍ່ມີອາສະວະ ຊຶ່ງເຖິງຝັ່ງແຫ່ງທຳທັງປວງ
ຂໍພຣະອົງໂຜດຕັດບອກອັນຍາວິໂມກ
ອັນເປັນເຄື່ອງທຳລາຍອະວິດຊາດ້ວຍເທີ້ນ (໑)

[໑໖໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸໄທ)

ເຮົາຈະບອກອັນຍາວິໂມກ
ອັນເປັນເຄື່ອງລະຄວາມພໍໃຈ
ໃນກາມແລະໂທມະນັດທັງ ๘ ຢ່າງ
ເປັນເຄື່ອງບັນເທົາຄວາມທໍ້ທໍ້
ແລະເປັນເຄື່ອງກັ້ນຄວາມຄະນອງ (๘)

[໑໖๘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ເຮົາຈະບອກອັນຍາວິໂມກທີ່ບໍລິສຸດ
ຍ້ອນມີອຸເປກຂາແລະສະຕິ ທີ່ມີທຳຕັກກະກະເປັນເບື້ອງຕົ້ນ
ເປັນເຄື່ອງທຳລາຍອະວິດຊາ (໓)

[໑໖໓] (ທ່ານອຸໄທທູນຖາມວ່າ)

ສັດໂລກມີອັນໃດເປັນເຄື່ອງປະກອບໄວ້
ອັນໃດນໍ ເປັນເຫດທ່ຽວໄປຂອງສັດໂລກນັ້ນ
ຍ້ອນລະອັນໃດໄດ້ນໍ ພຣະອົງຈຶ່ງຕັດວ່າ ນິບພານ (໔)

[໑໖໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ສັດໂລກມີຄວາມເພີດເພີນເປັນເຄື່ອງປະກອບໄວ້
ຄວາມນຶກເປັນເຫດທ່ຽວໄປຂອງສັດໂລກນັ້ນ
ຍ້ອນລະຕັນຫາໄດ້ ເຮົາຈຶ່ງຮຽກວ່າ ນິບພານ (໕)

[໑໖໕] (ທ່ານອຸໄທທູນຖາມວ່າ)

ຂ້າພຣະອົງມາເຝົ້າເພື່ອທູນຖາມພຣະຜູ້ມີພຣະພາກເຈົ້າວ່າ
ສັດໂລກມີສະຕິທ່ຽວໄປຢູ່ແນວໃດ ວິນຍານຈຶ່ງດັບສະນິດ
ຂໍຟັງພຣະດຳຣັດນັ້ນຂອງພຣະອົງ (໖)

[໑໓໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ສັດໂລກບໍ່ຍິນດີເວທະນາພາຍໃນແລະພາຍນອກ
ມີສະຕິທ່ຽວໄປຢູ່ແນວນີ້ ວິນຍານຈຶ່ງດັບສະນິດ (໗)

**ອຸທະຍະມານະວະປັນຫາທີ ໑໓ ຈົບ**

## ໑໔. ໂປສາລະມານະວະປັນຫາ

## ວ່າດ້ວຍປັນຫາຂອງໂປສາລະມານົບ

[໑໓໗] (ທ່ານໂປສາລະທູນຖາມ ດັ່ງນີ້)

ພຣະຜູ້ມີພຣະພາກເຈົ້າພຣະອົງໃດ
ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ
ຕັດຄວາມສົງໄສໄດ້ແລ້ວ
ຊົງສະແດງອະດີດທຳ
ຂ້າພຣະອົງມີປັນຫາທີ່ຈະທູນຖາມ
ຈຶ່ງມາເຝົ້າພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຜູ້ຊົງເຖິງຝັ່ງແຫ່ງທຳທັງປວງ (໑)

[໑໓໘] (ທ່ານໂປສາລະທູນຖາມວ່າ)

ຂ້າແຕ່ ພຣະອົງຜູ້ສັກກະ ຂ້າພຣະອົງຂໍທູນຖາມເຖິງຍານ
ຂອງບຸກຄົນຜູ້ບໍ່ມີຮູບສັນຍາ ຜູ້ລະຮູບກາຍໄດ້ທັງໝົດ
ຜູ້ພິຈາລະນາທັງພາຍໃນແລະພາຍນອກເຫັນວ່າບໍ່ມີອັນໃດ
ບຸກຄົນຜູ້ເປັນເຊັ່ນນັ້ນ ຄວນແນະນຳແນວໃດ (໒)

[໑໓໙] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂປສາລະ)

ຕະຖາຄົດຮູ້ຍິ່ງເຊິ່ງວິນຍານັດຖິຕິທັງໝົດ
ຮູ້ຈັກບຸກຄົນນັ້ນຜູ້ດຳຣົງຢູ່ ຜູ້ນ້ອມໄປແລ້ວ
ຜູ້ມີອາກິນຈັນຍາຍະຕະນະສະມາບັດນັ້ນເປັນບ່ອນມຸ້ງໝາຍ (໓)

[໑໔໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ບຸກຄົນນັ້ນຮູ້ກຳມາພິສັງຂານວ່າເປັນເຫດເກີດ
ແຫ່ງອາກິນຈັນຍາຍະຕະນະສະມາບັດ

ຮູ້ອະຮູປະຣາຄະວ່າມີຄວາມເພີດເພີນເປັນເຄື່ອງຜູກໄວ້
ເມື່ອຮູ້ກຳນັ້ນແນວນີ້ແລ້ວ ອອກຈາກສະມາບັດນັ້ນ
ເຫັນແຈ້ງທຳທີ່ເກີດໃນສະມາບັດນັ້ນ
ຍານນີ້ຂອງພາມຜູ້ຢູ່ຈົບພົມມະຈັນນັ້ນ
ເປັນຍານອັນແທ້ຈິງ (໔)

**ໂປສາລະມານະວະບັນຫາທີ ໑໔ ຈົບ**

## ໑໕. ໂມຄະຣາດມານະວະບັນຫາ

## ວ່າດ້ວຍບັນຫາຂອງໂມຄະຣາດມານົບ

[໑໔໑] (ທ່ານໂມຄະຣາດທູນຖາມ ດັ່ງນີ້)

ຂ້າພຣະອົງໄດ້ທູນຖາມພຣະອົງຜູ້ສັກກະ ໒ ຄັ້ງແລ້ວ
ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະຈັກຂຸ
ບໍ່ໄດ້ຊົງພະຍາກອນແກ່ຂ້າພຣະອົງ
ຂ້າພຣະອົງຮັບຮູ້ມາວ່າ
ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນເທບຣືສີ
(ຖ້າຜູ້ໃດຖາມບັນຫາ) ເຖິງ ໓ ຄັ້ງ ຈະຊົງພະຍາກອນ (໑)

[໑໔໒] (ທ່ານໂມຄະຣາດທູນຖາມວ່າ)

ໂລກນີ້ ໂລກອື່ນ ພົມມະໂລກພ້ອມທັງເທວະໂລກ
ຍ່ອມບໍ່ຮູ້ແຈ້ງຄວາມເຫັນຂອງພຣະອົງ
ຜູ້ໂຄຕະມະໂຄດ ຜູ້ມີພຣະຍົດ (໒)

[໑໔໓] (ທ່ານໂມຄະຣາດທູນຖາມວ່າ)

ຂ້າພຣະອົງມີບັນຫາທີ່ຈະທູນຖາມຈຶ່ງມາເຝົ້າພຣະອົງ
ຜູ້ຊົງມີປົກກະຕິເຫັນທຳອັນງາມແນວນີ້
ບຸກຄົນພິຈາລະນາເຫັນໂລກແນວໃດ ມັດຈຸຣາດຈຶ່ງບໍ່ເຫັນ (໓)

[໑໔໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ໂມຄະຣາດ ທ່ານຈົ່ງພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ
ມີສະຕິທຸກເມື່ອ ເພິ່ງຖອນອັດຕານຸທິດຖິສາ

ເປັນຜູ້ຂ້າມມັດຈຸຣາດສາໄດ້ ດ້ວຍອາການແນວນີ້
ບຸກຄົນພິຈາລະນາເຫັນໂລກຢູ່ແນວນີ້ ມັດຈຸຣາດຈຶ່ງແນມບໍ່ເຫັນ (໔)

**ໂມຄະຣາດມານະວະປັນຫາທີ ໑໕ ຈົບ**

## ໑໖. ປິງຄິຍະມານະວະປັນຫາ

## ວ່າດ້ວຍປັນຫາຂອງປິງຄິຍະມານົບ

[໑໔໕] (ທ່ານປິງຄິຍະທູນຖາມ ດັ່ງນີ້)

ຂ້າພຣະອົງຊະຣາພາບແລ້ວ ບໍ່ມີກຳລັງ
ຜິວພັນບໍ່ຜຸດຜ່ອງ ດວງຕາບໍ່ແຈ່ມໃສ ຫູຟັງບໍ່ແຈ້ງ
ຂໍຂ້າພຣະອົງຢ່າໄດ້ເປັນຄົນຫຼົງເສຍຫາຍໃນລະຫວ່າງນີ້ເລີຍ
ຂໍພຣະອົງໂຜດຕັດບອກທຳທີ່ເປັນເຄື່ອງລະຊາດແລະຊະຣາ
ໃນໂລກນີ້ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້ (໑)

[໑໔໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປິງຄິຍະ)

ຊົນທັງຫຼາຍເຫັນຊົນອື່ນ ໆ ເດືອດຮ້ອນຢູ່
ຍ້ອນຮູບທັງຫຼາຍແລ້ວ ຍັງຜະໝາດເຈັບປວດຍ້ອນຮູບທັງຫຼາຍ
ປິງຄິຍະ ຍ້ອນແນວນັ້ນ ທ່ານຈຶ່ງເປັນຜູ້ບໍ່ຜະໝາດ
ລະຮູບສາໃຫ້ໄດ້ ເພື່ອຈະບໍ່ເກີດອີກຕໍ່ໄປ (໔)

[໑໔໗] (ທ່ານປິງຄິຍະທູນຖາມວ່າ)

ທິດໃຫຍ່ ໔ ທິດນ້ອຍ ໔ ທິດເບື້ອງເທິງ ໑
ທິດເບື້ອງລຸ່ມ ໑ ເຫຼົ່ານີ້ລວມເປັນ ໑໐
ສິ່ງໃດ ໆ ໃນໂລກທີ່ພຣະອົງບໍ່ຊົງເຫັນ ບໍ່ຊົງໄດ້ຍິນ
ບໍ່ຊົງຮູ້ ຫຼື ບໍ່ຊົງຮູ້ແຈ້ງ ບໍ່ໄດ້ມີເລີຍ
ຂໍພຣະອົງໂຜດຕັດບອກທຳທີ່ເປັນເຄື່ອງລະຊາດແລະຊະຣາ
ໃນໂລກນີ້ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້ (໓)

[໑໔໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປິງຄິຍະ)

ທ່ານຈົ່ງເພ່ງພິຈາລະນາໝູ່ມະນຸດ ຜູ້ຖືກຕັນຫາຄອບງຳຈິດ
ເກີດຄວາມຮ້ອນຮົນ ຖືກຊະຣາຄອບງຳແລ້ວ

ປິງຄິຍະ ຍ້ອນແນວນັ້ນທ່ານຈຶ່ງເປັນຜູ້ບໍ່ພະໝາດ
ລະຕັນຫາສາໃຫ້ໄດ້ ເພື່ອຈະບໍ່ເກີດອີກຕໍ່ໄປ (໔)

**ປິງຄິຍະມານະວະປັນຫາທີ ໑໖ ຈົບ**

# ໓. ປາຣາຍະນັດຖຸຕິຄາຖາ

## ວ່າດ້ວຍການສະດຸດີທຳເປັນເຫດໃຫ້ເຖິງຝັ່ງ

(ພຣະທຳສັງຄາຫະກາຈານເມື່ອຈະສັນເສີນພຣະທຳເທດສະໜານີ້ຈຶ່ງໄດ້ກ່າວໄວ້ດັ່ງນີ້ວ່າ)

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຄາຖານີ້ແລ້ວ ເມື່ອປະທັບຢູ່ໃນ ປາສານະກະເຈດີ ແຄວ້ນມະຄົດ ໄດ້ຊົງຮັບອາຣາດທະນາຂາບທູນຫຼາຍຄັ້ງຈາກພາມ ໑໖ ຄົນ ຜູ້ເປັນສິດໃກ້ຊິດ ໄດ້ຊົງພະຍາກອນປັນຫາແລ້ວ

ຖ້າແມ່ນບຸກຄົນຮູ້ທົ່ວເຖິງອັດຖະ ຮູ້ທົ່ວເຖິງທຳແຫ່ງປັນຫາແຕ່ລະປັນຫາແລ້ວປະຕິບັດທຳຖືກຕ້ອງຕາມຫຼັກທຳ ກໍຈະເພິ່ງເຖິງຝັ່ງແຫ່ງຊະຣາ ແລະມໍຣະນະໄດ້ແນ່ນອນ ຍ້ອນທຳເຫຼົ່ານີ້ເປັນເຫດໃຫ້ເຖິງຝັ່ງ ຍ້ອນເຫດດັ່ງກ່າວມານີ້ນັ້ນ ທຳບັນລະຍາຍນີ້ ຈຶ່ງຊື່ວ່າ ປາຣາຍະນະ

[໑໔໙] (໑) ອະຊິຕະ (໒) ຕິດສະເມດໄຕຍະ
(໓) ປຸນນະກະ (໔) ເມດຕະຄູ (໕) ໂທຕະກະ
(໖) ອຸປະສີວະ (໗) ນັນທະ (໘) ເຫມະກະ (໑)

[໑໕໐] (໙) ໂຕເທີຍຍະ (໑໐) ກັບປະ
(໑໑) ຊະຕຸກັນນີ ຜູ້ເປັນບັນດິດ (໑໒) ພັດທະຣາວຸດ (໑໓) ອຸໄທ
(໑໔) ໂປສາລະ (໑໕) ໂມຄະຣາດ ຜູ້ມີປັນຍາ
(໑໖) ປິງຄິຍະ ຜູ້ເປັນມະຫາຣືສີ (໒)

[໑໕໑] ພາມ ໑໖ ຄົນນີ້ ພາກັນມາເຂົ້າເຝົ້າພຣະພຸດທະເຈົ້າ
ຜູ້ຊົງພຽບພ້ອມດ້ວຍຈະຣະນະ ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ເມື່ອຈະທູນຖາມປັນຫາທີ່ລຸ່ມເລິກ
ຈຶ່ງເຂົ້າໄປໃກ້ພຣະພຸດທະເຈົ້າຜູ້ປະເສີດ (໓)

[໑໕໒] (ພຣະທຳສັງຄາຫະກາຈານກ່າວວ່າ)
ພຣະພຸດທະເຈົ້າ (ອັນພາມເຫຼົ່ານັ້ນ)
ທູນສອບຖາມປັນຫາແລ້ວ

ຊົງພະຍາກອນແກ່ພາມເຫຼົ່ານັ້ນຕາມຄວາມເປັນຈິງ
ພຣະພຸດທະມຸນີຊົງເຮັດໃຫ້ພາມທັງຫຼາຍພໍໃຈ
ດ້ວຍການຊົງພະຍາກອນບັນຫາທັງຫຼາຍ (໔)

[໑໕໓] (ພຣະທຳສັງຄາຫະກາຈານກ່າວວ່າ)

ພາມເຫຼົ່ານັ້ນ ອັນພຣະພຸດທະເຈົ້າຜູ້ມີພຣະຈັກຊຸ
ຊົງເປັນເຜົ່າພັນແຫ່ງພຣະອາທິດເຮັດໃຫ້ພໍໃຈແລ້ວ
ໄດ້ປະພຶດພົມມະຈັນໃນສຳນັກພຣະພຸດທະເຈົ້າ
ຜູ້ມີພຣະປັນຍາອັນປະເສີດ (໕)

[໑໕໔] (ພຣະທຳສັງຄາຫະກາຈານກ່າວວ່າ)

ການພະຍາກອນບັນຫາແຕ່ລະບັນຫາ
ທີ່ພຣະພຸດທະເຈົ້າຊົງສະແດງແລ້ວໂດຍປະການໃດ
ຜູ້ໃດປະຕິບັດຕາມໂດຍປະການນັ້ນ
ຜູ້ນັ້ນເພິ່ງຈາກບ່ອນບໍ່ແມ່ນຝັ່ງເຖິງຝັ່ງໄດ້ (໖)

[໑໕໕] (ພຣະທຳສັງຄາຫະກາຈານກ່າວວ່າ)

ບຸກຄົນເມື່ອຈະເລີນມັກອັນສູງສຸດ
ຈະເພິ່ງຈາກບ່ອນບໍ່ແມ່ນຝັ່ງເຖິງຝັ່ງໄດ້
(ຍ້ອນ) ມັກນັ້ນ (ເປັນໄປ) ເພື່ອໃຫ້ເຖິງຝັ່ງ
ຍ້ອນແນວນັ້ນ ມັກນັ້ນ ຈຶ່ງຊື່ວ່າປາຣາຍະນະ (໗)

**ປາຣາຍະນັດຖຸຕິຄາຖາ ຈົບ**

# ໔. ປາຣາຍະນານຸຄີຕິຄາຖາ

## ວ່າດ້ວຍເພງຂັບຕາມທຳເປັນເຫດໃຫ້ເຖິງຝັ່ງ

[໑໕໖] (ພຣະປິງຄິຍະເຖຣະກ່າວແກ່ພາມພາວະຣີທ່າມກາງຊຸມຊົນ ດັ່ງນີ້)

ອາດຕະມາພາບຈັກກ່າວບົດຂັບທີ່ເປັນເຫດໃຫ້ເຖິງຝັ່ງ
ຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້

ພຣະຜູ້ມີພຣະພາກເຈົ້າຊຶ່ງເປັນຜູ້ປາສະຈາກມົນທິນ
ມີພຣະປັນຍາດັ່ງພູຣີ ປາສະຈາກກາມ
ຊຶ່ງຂາດກິເລດດັ່ງປ່າ ຜູ້ເປັນນາຄະ
ຊຶ່ງເຫັນແນວໃດ ກໍຕັດແນວນັ້ນ
ຈະເພິ່ງກ່າວຄໍາຕິວະຍ້ອນເຫດແຫ່ງອັນໃດນໍ (໑)

[໑໕໗] (ພຣະປິງຄິຍະເຖຣະກ່າວວ່າ)

ອາດຕະມາພາບຈັກກ່າວຄໍາເວົ້າ
ທີ່ປະກອບດ້ວຍການສັນເສີນພຣະຜູ້ມີພຣະພາກເຈົ້າ
ຜູ້ຊຶ່ງລະມົນທິນແລະໂມຫະໄດ້ແລ້ວ
ຜູ້ຊຶ່ງລະຄວາມຖືຕົວແລະຄວາມລົບຫຼູ່ໄດ້ ໃນບັດນີ້ (໒)

[໑໕໘] (ພຣະປິງຄິຍະເຖຣະກ່າວວ່າ)

ທ່ານພາມມະນາຈານ ພຣະຜູ້ມີພຣະພາກພຸດທະເຈົ້າ
ຊຶ່ງເປັນຜູ້ກໍາຈັດຄວາມມືດ ມີສະມັນຕະຈັກຂຸ
ຊຶ່ງເຖິງບ່ອນສຸດໂລກ ຊຶ່ງລ່ວງພົບໄດ້ທັງໝົດ
ບໍ່ມີອາສະວະ ຊຶ່ງລະທຸກທັງປວງໄດ້ແລ້ວ
ຊຶ່ງມີຊື່ຕາມຄວາມຈິງ ອາດຕະມາພາບໄດ້ເຂົ້າເຝົ້າມາແລ້ວ (໓)

[໑໕໙] (ພຣະປິງຄິຍະເຖຣະກ່າວວ່າ)

ທິຊະ (ນົກ) ເພິ່ງລະປ່ານ້ອຍແລ້ວມາອາໄສປ່າໃຫຍ່
ທີ່ມີໝາກໄມ້ຫຼາຍສັນໃດ ອາດຕະມາພາບກໍສັນນັ້ນ
ລະຄະນາຈານຜູ້ມີທັດສະນະແຄບ ໄປເຝົ້າພຣະຜູ້ມີພຣະພາກເຈົ້າ
ເໝືອນຫົງເອີ່ນລົງສູ່ສະໃຫຍ່ (໔)

[໑໖໐] (ພຣະປິງຄິຍະເຖຣະກ່າວວ່າ)

ກ່ອນແຕ່ສາດສະໜາຂອງພຣະໂຄດົມ
ອາຈານເຈົ້າລັດທິເຫຼົ່າໃດເຄີຍພະຍາກອນແກ່ອາດຕະມາພາບວ່າ
ເຫດນີ້ໄດ້ເປັນມາແລ້ວແນວນີ້ ຈັກເປັນແນວນີ້
ຄໍາພະຍາກອນທັງໝົດນັ້ນເປັນຄໍາທີ່ເຊື່ອສືບຕໍ່ກັນມາ
ຄໍາພະຍາກອນທັງໝົດນັ້ນມີແຕ່ຈະເຮັດໃຫ້ນຶກໄປຕ່າງ ໆ (໕)

[໑໖໑] (ພຣະປິງຄິຍະເຖຣະກ່າວວ່າ)

ພຣະໂຄດົມຊົງເປັນເອກບຸຣຸດ
ປະທັບນັ່ງທຳລາຍຄວາມມືດຢູ່ ຊົງຮຸ່ງເຮືອງ ຊົງແຜ່ຣັດສະໝີ
ພຣະໂຄດົມຜູ້ມີພຣະຍານດັ່ງພູຣີ
ພຣະໂຄດົມຜູ້ມີພຣະປັນຍາດັ່ງພູຣີ (໖)

[໑໖໘] (ພຣະປິງຄິຍະເຖຣະກ່າວວ່າ)

ທຳໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
ພຣະຜູ້ມີພຣະພາກເຈົ້າພຣະອົງໃດຊົງສະແດງທຳ
ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ
ເປັນບ່ອນສິ້ນຕັນຫາ ບໍ່ມີອັນຕະລາຍແກ່ອາດຕະມາພາບ (໗)

[໑໖໓] (ພາມພາວະຣີກ່າວວ່າ)

ທ່ານປິງຄິຍະ ຍ້ອນເຫດໃດນໍ
ທ່ານຈຶ່ງຢູ່ປາສະຈາກພຣະພຸດທະເຈົ້າພຣະອົງນັ້ນ
ພຣະໂຄດົມຜູ້ມີພຣະຍານດັ່ງພູຣີ
ພຣະໂຄດົມຜູ້ມີພຣະປັນຍາດັ່ງພູຣີ ສິ້ນການບໍ່ດົນ (໘)

[໑໖໔] (ພາມພາວະຣີກ່າວວ່າ)

ທຳໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
ພຣະຜູ້ມີພຣະພາກເຈົ້າພຣະອົງໃດຊົງສະແດງທຳ
ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ
ເປັນບ່ອນສິ້ນຕັນຫາ ບໍ່ມີອັນຕະລາຍແກ່ທ່ານ (໙)

[໑໖໕] (ພຣະປິງຄິຍະເຖຣະກ່າວວ່າ)

ທ່ານພາມ ອາດຕະມາພາບບໍ່ໄດ້ຢູ່ປາສະຈາກ
ພຣະພຸດທະເຈົ້າພຣະອົງນັ້ນ ພຣະໂຄດົມຜູ້ມີພຣະຍານດັ່ງພູຣີ
ພຣະໂຄດົມຜູ້ມີພຣະປັນຍາດັ່ງພູຣີ ສິ້ນການບໍ່ດົນ (໑໐)

[໑໖໖] (ພຣະປິງຄິຍະເຖຣະກ່າວວ່າ)

ທຳໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
ພຣະຜູ້ມີພຣະພາກເຈົ້າພຣະອົງໃດຊົງສະແດງທຳ

ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ
ເປັນບ່ອນສິ້ນຕັນຫາ ບໍ່ມີອັນຕະລາຍແກ່ອາດຕະມາພາບ (໑໑)

[໑໖໗] (ພຣະປິງຄິຍະເຖຣະກ່າວວ່າ)

ທ່ານພາມ ອາດຕະມາພາບບໍ່ຜະໝາດ
ທັງກາງຄືນແລະກາງເວັນ ຍ່ອມເຫັນພຣະໂຄດົມພຸດທະເຈົ້າ
ພຣະອົງນັ້ນດ້ວຍໃຈ ເໝືອນເຫັນດ້ວຍຕາ
ອາດຕະມາພາບນອບນ້ອມພຣະອົງຢູ່ຕະຫຼອດຣາຕີ
ອາດຕະມາພາບເຂົ້າໃຈຄວາມບໍ່ຢູ່ປາສະຈາກ
ພຣະພຸດທະເຈົ້າພຣະອົງນັ້ນ (໑໘)

[໑໖໘] (ພຣະປິງຄິຍະເຖຣະກ່າວວ່າ)

ທຳເຫຼົ່ານີ້ ຄື ສັດທາ ປີຕິ ມະນະ ແລະສະຕິ
ຍ່ອມບໍ່ຫາຍໄປຈາກສາດສະໜາຂອງພຣະໂຄດົມພຸດທະເຈົ້າ
ພຣະໂຄດົມຜູ້ມີພຣະປັນຍາດັ່ງພູຣີສະເດັດໄປສູ່ທິດໃດ ໆ
ອາດຕະມາພາບເປັນຜູ້ນ້ອມໄປທາງທິດນັ້ນ ໆ ນັ້ນແລ (໑໓)

[໑໖໙] (ພຣະປິງຄິຍະເຖຣະກ່າວວ່າ)

ອາດຕະມາພາບຊະຣາແລ້ວ ມີກຳລັງແລະເຫື່ອແຮງມີໜ້ອຍ
ຍ້ອນເຫດນັ້ນແລ ຮ່າງກາຍຈຶ່ງໄປໃນສະຖານທີ່
ທີ່ພຣະພຸດທະເຈົ້າປະທັບຢູ່ບໍ່ໄດ້
ແຕ່ອາດຕະມາພາບໄປເຝົ້າພຣະອົງເປັນນິດ
ໂດຍການໄປດ້ວຍຄວາມດຳຣິ ທ່ານພາມ
ຍ້ອນວ່າໃຈຂອງອາດຕະມາພາບເກາະກ່ຽວຢູ່ກັບສະຖານທີ່
ທີ່ພຣະພຸດທະເຈົ້າປະທັບຢູ່ນັ້ນ (໑໔)

[໑໗໐] (ພຣະປິງຄິຍະເຖຣະກ່າວວ່າ)

ອາດຕະມາພາບນອນດີ້ນຣົນຢູ່ໃນເປືອກຕົມ
ລອຍຈາກເກາະໜຶ່ງໄປສູ່ເກາະໜຶ່ງ
ເມື່ອຕໍ່ມາ ອາດຕະມາພາບໄດ້ເຝົ້າພຣະສຳພຸດທະເຈົ້າ
ຜູ້ຊົງຂ້າມໂອຄະໄດ້ແລ້ວ ບໍ່ມີອາສະວະ (໑໕)

[໑໗໑] (ພຣະຜູ້ມີພຣະພາກເຈົ້າສະເດັດມາຕັດວ່າ)

ວັກກະລິ ພັດທະຣາວຸດ ແລະອາລະວີໂຄດົມ
ເປັນຜູ້ມີສັດທາອັນນ້ອມໄປແລ້ວ ສັນໃດ
ແມ່ນທ່ານກໍຈົ່ງເປີດເຜີຍສັດທາ ສັນນັ້ນຄືກັນ
ປິງຄິຍະ ທ່ານຈັກເຖິງຝັ່ງນັ້ນ (ຝັ່ງກົງກັນຂ້າມ) ແຫ່ງບ້ວງມັດຈຸຣາດ (໑໖)

[໑໗໒] (ພຣະປິງຄິຍະເຖຣະຂາບທູນວ່າ)

ຂ້າພຣະອົງນີ້ຟັງພຣະດຳຣັດຂອງພຣະມຸນີແລ້ວ
ເຫຼື້ອມໃສຢ່າງຍິ່ງ ພຣະສຳມາສຳພຸດທະເຈົ້າ
ຊົງມີເຄື່ອງປິດບັງອັນເປີດແລ້ວ
ບໍ່ມີກິເລດດັ່ງຕະປູຕຶງຈິດ ຊົງມີປະຕິພານ (໑໗)

[໑໗໓] (ພຣະປິງຄິຍະເຖຣະຂາບທູນວ່າ)
ພຣະຜູ້ມີພຣະພາກເຈົ້າຊົງຮູ້ແຈ້ງອະທິເທບ
ຊົງຮູ້ທຳຂອງພຣະອົງແລະຂອງຄົນອື່ນທັງປວງ
ເປັນພຣະສາດສະດາຜູ້ກະທຳສ່ວນສຸດແຫ່ງບັນຫາທັງຫຼາຍ
ເພື່ອເຫຼົ່າຊົນຜູ້ມີຄວາມສົງໄສ ໃຫ້ກັບຮູ້ໄດ້ (໑໘)

[໑໗໔] (ພຣະປິງຄິຍະເຖຣະຂາບທູນວ່າ)

ສະພາວະໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
ສະພາວະນັ້ນອັນອັນໃດນຳໄປບໍ່ໄດ້ ບໍ່ກຳເຣີບ
ຂ້າພຣະອົງຈັກເຖິງສະພາວະນັ້ນແນ່ນອນ
ຄວາມສົງໄສໃນສະພາວະນັ້ນບໍ່ມີແກ່ຂ້າພຣະອົງ
ຂໍພຣະອົງໂຜດຊົງຈຳຂ້າພຣະອົງວ່າ
ເປັນຜູ້ມີຈິດນ້ອມໄປໃນສະພາວະນັ້ນແລ້ວ ດ້ວຍປະການແນວນີ້ແລ (໑໙)

**ປາຣາຍະນານຸຄີຕິຄາຖາ ຈົບ**

# ໕. ມານະວະປັນຫານິດເທດ

## ວ່າດ້ວຍປັນຫາຂອງມານົບ ໑໖ ຄົນ

## ໑. ອະຊິຕະມານະວະປັນຫານິດເທດ

### ວ່າດ້ວຍປັນຫາຂອງອະຊິຕະມານົບ

[໑] (ທ່ານອະຊິຕະທູນຖາມ ດັ່ງນີ້)

ໂລກຖືກອັນໃດນໍ ຫຸ້ມຫໍ່ໄວ້
ຍ້ອນເຫດໃດນໍ ໂລກຈຶ່ງບໍ່ສົດໃສ
ຂໍພຣະອົງໂຜດຕັດບອກວ່າ
ອັນໃດເປັນເຄື່ອງສາບທາໂລກນັ້ນໄວ້
ອັນໃດນໍ ເປັນໄພໃຫຍ່ຂອງໂລກນັ້ນ (໑)

ຄຳວ່າ ໂລກ ໃນຄຳວ່າ ໂລກຖືກອັນໃດນໍ ຫຸ້ມຫໍ່ໄວ້ ໄດ້ແກ່ ໂລກນະຣົກ ໂລກກຳເນີດເດຍຣັດສານ ໂລກໃນເຜດວິໄສ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ ໂລກນີ້ ໂລກໜ້າ ພົມມະໂລກ ເທວະໂລກ ນີ້ ຕັດຮຽກວ່າ ໂລກ ໂລກນີ້ ຖືກອັນໃດໂອບລ້ອມ ຫຸ້ມຫໍ່ ຄື ຫ້ອມລ້ອມ ຄອບຄຸມ ປົກຄຸມ ປົດບັງໄວ້ ລວມຄວາມວ່າ ໂລກຖືກອັນໃດນໍ ຫຸ້ມຫໍ່ໄວ້

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານອະຊິຕະທູນຖາມ ດັ່ງນີ້ ເປັນບົດສົນທິ ເປັນຄຳເຊື່ອມບົດເປັນຄຳທີ່ເຮັດບົດໃຫ້ບໍລິບູນ ເປັນຄວາມສຳພັນແຫ່ງອັກສອນ ເປັນຄວາມສະຫຼະສະຫຼວຍແຫ່ງພະຍັນຊະນະ ຄຳວ່າ ດັ່ງນີ້ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ທ່ານ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາລົບ ຄຳວ່າ ທ່ານນີ້ ເປັນຄຳກ່າວທີ່ມີຄວາມເຄົາລົບ ແລະຄວາມຢຳເກງ

ຄຳວ່າ ອະຊິຕະ ເປັນຊື່ຂອງພາມນັ້ນ ຄື ເປັນການກ່າວເຖິງ ການຂະໜານນາມ ການບັນຍັດ ຊື່ທີ່ຮຽກກັນ ຊື່ ການຕັ້ງຊື່ ຊື່ທີ່ຕັ້ງໃຫ້ ພາສາ ພະຍັນຊະນະ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານ ອະຊິຕະທູນຖາມ ດັ່ງນີ້

ຄຳວ່າ ຍ້ອນເຫດໃດນໍ ໂລກຈຶ່ງບໍ່ສົດໃສ ອະທິບາຍວ່າ ຍ້ອນເຫດໃດ ໂລກຈຶ່ງບໍ່ສົດໃສ ຄື ບໍ່ສ່ອງສະຫວ່າງ ບໍ່ແຜດແສງ ບໍ່ຮຸ່ງເຮືອງ ບໍ່ຊັດແຈ້ງ ບໍ່ຜາກົດແຈ້ງ ລວມຄວາມວ່າ ຍ້ອນເຫດໃດນໍ ໂລກຈຶ່ງບໍ່ສົດໃສ

ຄຳວ່າ ຂໍພຣະອົງໂຜດຕັດບອກວ່າອັນໃດ ເປັນເຄື່ອງສາບທາໂລກນັ້ນໄວ້ ອະທິບາຍວ່າ ອັນໃດເປັນເຄື່ອງສາບທາ ຄື ກ່ຽວຂ້ອງ ຜູກພັນ ເຮັດໃຫ້ໂລກນີ້ເສົ້າໝອງ ໂລກຖືກອັນໃດສາບທາ ລູບທາ ເຮັດໃຫ້ໝອງມົວ ໝອງຄ້ຳ ແປດເປື້ອນ ປະປົນ ເກາະຕິດ ກ່ຽວພັນ ພົວພັນໄວ້ ຂໍພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍປະກາດ ລວມຄວາມວ່າ ຂໍພຣະອົງໂຜດຕັດບອກວ່າອັນໃດເປັນເຄື່ອງສາບທາໂລກນັ້ນໄວ້

ຄຳວ່າ ອັນໃດນໍ ເປັນໄພໃຫຍ່ຂອງໂລກນັ້ນ ອະທິບາຍວ່າ ອັນໃດເປັນໄພ ເປັນໄພໃຫຍ່ ຄື ເປັນເຄື່ອງບີບຄັ້ນ ເປັນສິ່ງກະທົບກະທັ່ງ ເປັນອັນຕະລາຍ ເປັນອຸປະສັກຂອງໂລກນັ້ນ ລວມຄວາມວ່າ ອັນໃດນໍ ເປັນໄພໃຫຍ່ຂອງໂລກນັ້ນ ດ້ວຍເຫດນັ້ນ ພາມນັ້ນ ຈຶ່ງກ່າວວ່າ

(ທ່ານອະຊິຕະທູນຖາມ ດັ່ງນີ້)

ໂລກຖືກອັນໃດນໍ ຫຸ້ມຫໍ່ໄວ້
ຍ້ອນເຫດໃດນໍ ໂລກຈຶ່ງບໍ່ສົດໃສ
ຂໍພຣະອົງໂຜດຕັດບອກວ່າ
ອັນໃດເປັນເຄື່ອງສາບທາໂລກນັ້ນໄວ້
ອັນໃດນໍ ເປັນໄພໃຫຍ່ຂອງໂລກນັ້ນ

[໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອະຊິຕະ)

ໂລກຖືກອະວິດຊາຫຸ້ມຫໍ່ໄວ້
ໂລກບໍ່ສົດໃສຍ້ອນຄວາມຂີ້ຖີ່ແລະຄວາມຜະໝາດ
ເຮົາຮຽກຄວາມຢາກວ່າເປັນເຄື່ອງສາບທາໂລກໄວ້
ທຸກເປັນໄພໃຫຍ່ຂອງໂລກນັ້ນ (໔)

## ວ່າດ້ວຍອະວິດຊາ

ຄຳວ່າ ໂລກຖືກອະວິດຊາຫຸ້ມຫໍ່ໄວ້ ອະທິບາຍວ່າ

ຄຳວ່າ ອະວິດຊາ ໄດ້ແກ່ ຄວາມບໍ່ຮູ້ໃນທຸກ ຄວາມບໍ່ຮູ້ໃນທຸກຂະສະມຸໄທ ຄວາມບໍ່ຮູ້ໃນທຸກຂະນິໂຣທະ ຄວາມບໍ່ຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ ຄວາມບໍ່ຮູ້ໃນສ່ວນອະດີດ ຄວາມບໍ່ຮູ້ ໃນສ່ວນອະນາຄົດ ຄວາມບໍ່ຮູ້ໃນສ່ວນອະດີດ ແລະອະນາຄົດ ຄວາມບໍ່ຮູ້ໃນປະຕິດ

ຈະສະມຸບບາດວ່າ ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຄວາມບໍ່ຮູ້ ຄວາມບໍ່ເຫັນ ຄວາມບໍ່ຕັດສະຮູ້ ຄວາມບໍ່ຮູ້ໂດຍສົມຄວນ ຄວາມບໍ່ຮູ້ຕາມເປັນຈິງ ຄວາມບໍ່ແທງຕະຫຼອດ ຄວາມບໍ່ຖືເອົາໂດຍຖືກຕ້ອງ ຄວາມບໍ່ຫຍັ່ງລົງໂດຍຮອບຄອບ ຄວາມບໍ່ຄິດໄວ້ ຄວາມບໍ່ພິຈາລະນາ ຄວາມບໍ່ເຮັດໃຫ້ປະຈັກ ຄວາມຊາມປັນຍາ ຄວາມໂງ່ຈ້າ ຄວາມບໍ່ຮູ້ແຈ້ງ ຄວາມຫຼົງ ຄວາມລຸ້ມຫຼົງ ຄວາມຫຼົງໃຫຼ ອະວິດຊາ ໂອຄະຄືອະວິດຊາ ໂຍຄະຄືອະວິດຊາ ອະນຸໄສຄືອະວິດຊາ ປະຣິຍຸດຖານຄືອະວິດຊາ ຕາໜ່າງຄືອະວິດຊາ ອະກຸສົນມູນຄືໂມຫະນີ້ ຕັດຮຽກວ່າ ອະວິດຊາ

ຄຳວ່າ ໂລກ ໄດ້ແກ່ ໂລກນະຮົກ ໂລກກຳເນີດເດຍຣັດສານ ໂລກໃນເຜດວິໄສ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ ໂລກນີ້ ໂລກໜ້າ ພົມມະໂລກ ເທວະໂລກ ນີ້ ຕັດຮຽກວ່າ ໂລກ ໂລກນີ້ຖືກອະວິດຊານີ້ໂອບລ້ອມ ຫຸ້ມຫໍ່ ຄື ຫ້ອມລ້ອມ ຄອບຄຸມ ປົກຄຸມ ບົດບັງໄວ້ ລວມຄວາມວ່າ ໂລກຖືກອະວິດຊາຫຸ້ມຫໍ່ໄວ້

ຄຳວ່າ ອະຊິຕະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

## ອະທິບາຍຄຳວ່າ ພະຄະວາ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ

ອີກໄນໜຶ່ງ ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍຣາຄະໄດ້ແລ້ວ

ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍໂທສະໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍໂມຫະໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍມານະໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍທິດຖິໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍສັງບໜາມໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງທຳລາຍກິເລດໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງຈຳແນກ ແຍກແຍະ ແຈກແຈງທຳຣັດຕະນະ
ຊື່ວ່າພຣະຜູ້ມີພຣະພາກ ຍ້ອນຊົງເຮັດບ່ອນສຸດແຫ່ງພົບໄດ້ແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງອົບຣົມພຣະອໍຣະກາຍແລ້ວ
ຊື່ວ່າພຣະຜູ້ມີພຣະພາກເຈົ້າ ຍ້ອນຊົງອົບຣົມສີນ ອົບຣົມຈິດ ອົບຣົມປັນຍາແລ້ວ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງໃຊ້ສອຍເສນາສະໃນທີ່ເປັນປ່າເລົ່າ ແລະປ່າທຶບ ອັນສະຫງັດ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນບ່ອນຫຼີບຫຼີກ ຈຶ່ງຊື່ ວ່າພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງມີສ່ວນແຫ່ງຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງອັດຖະຣົດ ທຳມະຣົດ ວິມຸດຕິຣົດ ອະທິສີນ ອະທິຈິດ ອະທິປັນຍາ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງຊານ ໔ ອັບປະມັນຍາ ໔ ອະຣູບສະມາບັດ ໔ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງວິໂມກ ໘ ອະພິພາຍະຕະນະ ໘ ອະນຸປຸບພະວິຫາຣະສະມາບັດ ໙ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງສັນຍາພາວະນາ ໑໐ ກະສິນສະມາບັດ ໑໐ ອານາປານັດສະຕິສະມາທິ ອະສຸພະສະມາບັດ ໗ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ຈຶ່ງຊື່ວ່າ ພຣະຜູ້ມີພຣະພາກເຈົ້າ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສ່ວນແຫ່ງຕະຖາຄົດພະລະຍານ ໑໐ ເວສາຣັດຊະຍານ ໔ ປະຕິສຳພິທາ ໔ ອະພິນຍາ ໖ ພຸດທະທຳ ໖ ຈຶ່ງຊື່ວ່າພຣະຜູ້ມີພຣະພາກເຈົ້າ

ພຣະນາມວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ບໍ່ແມ່ນພຣະຊົນນີຊົງຕັ້ງ ບໍ່ແມ່ນພຣະຊະນົກຊົງຕັ້ງ ບໍ່ແມ່ນພຣະພາດາຊົງຕັ້ງ ບໍ່ແມ່ນພຣະພະຄິນີຊົງຕັ້ງ ບໍ່ແມ່ນມິດແລະອຳມາດຕັ້ງ ບໍ່ແມ່ນພຣະຍາດແລະຜູ້ຮ່ວມສາຍໂລຫິດຊົງຕັ້ງ ບໍ່ແມ່ນສະມະນະພາມຕັ້ງ ບໍ່ແມ່ນເທວະດາຕັ້ງ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນວິໂມກຂັນຕິກະນາມ (ພະນາມໃນລຳດັບການບັນລຸອະຣະຫັດຕະຜົນ) ເປັນສັດສິກາບັນຍັດຕິ (ບັນຍັດທີ່ເກີດຍ້ອນຊົງຮູ້ແຈ້ງອະຣະຫັດຕະຜົນ) ຂອງພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ພ້ອມກັບການບັນລຸພຣະສັບພັນຍຸຕະຍານ ທີ່ເຫງົ້າຕົ້ນໂພລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າ ຕັດຕອບວ່າ ອະຊິຕະ

## ວ່າດ້ວຍຄວາມຂີ້ຖີ່ ໕ ຢ່າງ

ຄຳວ່າ ໂລກບໍ່ສົດໃສຍ້ອນຄວາມຂີ້ຖີ່ແລະຄວາມຜະໝາດ ອະທິບາຍວ່າ ມັດສະຣິຍະ ໕ ຢ່າງ ຮຽກວ່າ ຄວາມຂີ້ຖີ່ ຄື

໑. ອາວາດມັດສະຣິຍະ (ຄວາມຂີ້ຖີ່ບ່ອນຢູ່)
໒. ກຸລະມັດສະຣິຍະ (ຄວາມຂີ້ຖີ່ຕະກູນ)
໓. ລາພະມັດສະຣິຍະ (ຄວາມຂີ້ຖີ່ລາບ)
໔. ວັນນະມັດສະຣິຍະ (ຄວາມຂີ້ຖີ່ວັນນະ)
໕. ທຳມະມັດສະຣິຍະ (ຄວາມຂີ້ຖີ່ທຳ)

ຄວາມຂີ້ຖີ່ ກິຣິຍາທີ່ຂີ້ຖີ່ ພາວະທີ່ຂີ້ຖີ່ ຄວາມເຫັນແກ່ໄດ້ ຄວາມຂີ້ໜຽວ ຄວາມທີ່ຈິດເຈັບຮ້ອນ (ໃນການໃຫ້) ຄວາມທີ່ຈິດຫວງແຫນເຫັນປານນີ້ ນີ້ ຕັດຮຽກວ່າ ຄວາມຂີ້ຖີ່

ອີກໄນໜຶ່ງ ຄວາມຂີ້ຖີ່ຂັນກໍດີ ຄວາມຂີ້ຖີ່ທາດກໍດີ ຄວາມຂີ້ຖີ່ອາຍະຕະນະກໍດີ ຄວາມມຸ້ງແຕ່ຈະໄດ້ກໍດີ ນີ້ ກໍຮຽກວ່າ ຄວາມຂີ້ຖີ່ ຂໍກ່າວເຖິງຄວາມຜະໝາດ ຄວາມປ່ອຍຈິດໄປ ຫຼື ການເພີ່ມພູນ ຄວາມປ່ອຍຈິດໄປໃນກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຫຼື ໃນການມະຄຸນ ໕ ຢ່າງ ການເຮັດໂດຍບໍ່ເຄົາລົບ ການເຮັດທີ່ບໍ່ໃຫ້ຕິດຕໍ່ ການເຮັດທີ່ບໍ່ໝັ້ນຄົງ ຄວາມປະພຶດຫຍໍ້ຫຍ່ອນ ຄວາມປະຖິ້ມສັນທະ ຄວາມປະຖິ້ມທຸຣະ ຄວາມບໍ່ເສບ ຄວາມບໍ່ຈະເລີນຄວາມບໍ່ເຮັດໃຫ້ຫຼາຍ ຄວາມຕັ້ງໃຈບໍ່ຈິງ ຄວາມບໍ່ໝັ້ນປະກອບ ຄວາມຜະໝາດໃນການຈະເລີນກຸສົນທຳທັງຫຼາຍ ຊື່ວ່າຄວາມຜະໝາດ ຄວາມຜະໝາດ ກິຣິຍາທີ່ຜະໝາດ ພາວະທີ່ຜະໝາດມີລັກສະນະເຊັ່ນວ່ານີ້ ນີ້ ຕັດຮຽກວ່າ ຄວາມຜະໝາດ

ຄຳວ່າ ໂລກບໍ່ສົດໃສຍ້ອນຄວາມຂີ້ຖີ່ ແລະຄວາມຜະໝາດ ອະທິບາຍວ່າ ໂລກບໍ່ສົດໃສ ຄື ບໍ່ສ່ອງສະຫວ່າງ ບໍ່ແຜດແສງ ບໍ່ຮຸ່ງເຮືອງ ບໍ່ຊັດແຈ້ງ ບໍ່ຜາກົດແຈ້ງຍ້ອນຄວາມຂີ້ຖີ່ແລະຄວາມຜະໝາດນີ້ ລວມຄວາມວ່າ ໂລກບໍ່ສົດໃສຍ້ອນຄວາມຂີ້ຖີ່ ແລະຄວາມຜະໝາດ

## ວ່າດ້ວຍຕັນຫາ

ຄຳວ່າ ເຮົາຮຽກຄວາມຢາກວ່າເປັນເຄື່ອງສາບທາໂລກໄວ້ ອະທິບາຍວ່າ ຕັນຫາ ຕັດຮຽກວ່າ ຄວາມຢາກ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ຄວາມໄປຕາມອາລົມຄວາມຍິນດີ ຄວາມເພີດເພີນ ຄວາມກຳໜັດດ້ວຍອຳນາດຄວາມເພີດເພີນ ຄວາມກຳໜັດແຮງກ້າແຫ່ງຈິດ ຄວາມຢາກ ຄວາມສະຍົບ ຄວາມມຶກມຸ່ນ ຄວາມຫື່ນ ຄວາມຫື່ນກະຫາຍ ຄວາມຂ້ອງຢູ່ຄວາມຈົມຢູ່ ທຳມະຊາດທີ່ເຮັດໃຫ້ພຸກພ່ານ ທຳມະຊາດທີ່ຫຼອກລວງ ທຳມະຊາດທີ່ຍັງສັດໃຫ້ເກີດທຳມະຊາດທີ່ຍັງສັດໃຫ້ເກີດພ້ອມ ທຳມະຊາດທີ່ຮ້ອຍຮັດ ທຳມະຊາດທີ່ມີຕາໜ່າງ ທຳມະຊາດທີ່ກຳຊາບໃຈ ທຳມະຊາດທີ່ຊ່ານໄປ ທຳມະຊາດດັ່ງເສັ້ນດ້າຍ ທຳມະຊາດທີ່ແຜ່ໄປ ທຳມະຊາດທີ່ປະມວນມາ ທຳມະຊາດທີ່ເປັນເພື່ອນ ຄວາມຄະນຶງຫາ ຕັນຫາທີ່ນຳພາໄປສູ່ພົບ ຕັນຫາດັ່ງປ່າຕັນຫາດັ່ງປ່າທຶບ

ຄວາມເຊີຍຊິດ ຄວາມເຍື່ອໃຍ ຄວາມຫ່ວງໃຍ ຄວາມຜູກພັນ ຄວາມຫວັງ ກິຣິຍາທີ່ຫວັງ ພາວະທີ່ຫວັງ ຄວາມຫວັງໃນຮູບ ຄວາມຫວັງໃນສຽງ ຄວາມຫວັງໃນກິ່ນ ຄວາມຫວັງໃນຣົດ ຄວາມຫວັງໃນໂຜດຖັບພະ ຄວາມຫວັງໃນລາບ ຄວາມຫວັງໃນຊັບ ຄວາມຫວັງໃນບຸດຄວາມຫວັງໃນຊີວິດ ທຳມະຊາດທີ່ກະຊິບ ທຳມະຊາດທີ່ກະຊິບເລື້ອຍ ໆ ທຳມະຊາດທີ່ກະຊິບຍິ່ງ ຄວາມກະຊິບ ກິຣິຍາທີ່ກະຊິບ ພາວະທີ່ກະຊິບ ຄວາມລະໂມບ ກິຣິຍາທີ່ລະໂມບ ພາວະທີ່

ລະໂມບ ທຳມະຊາດທີ່ເຮັດໃຫ້ຫວັ່ນໄຫວ ພາວະທີ່ຕ້ອງການແຕ່ອາລົມດີ ໆ ຄວາມກຳໜັດ ໃນຖານະອັນບໍ່ຄວນ ຄວາມໂລບເກີນພໍດີ ຄວາມຕິດໃຈ ກິຣິຍາທີ່ຕິດໃຈ ຄວາມປາຖະໜາ ຄວາມໃຝ່ຫາ ຄວາມໝາຍປອງ ກາມຕັນຫາ ພະວະຕັນຫາ ວິພະວະຕັນຫາ ຕັນຫາໃນຮູບພົບ ຕັນຫາໃນອະຮູບພົບ ຕັນຫາໃນນິໂຣດ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ ໂອຄະ ໂຍຄະ ຄັນຖະ ອຸປາທານ ອາວອນ ນິວອນ ເຄື່ອງປິດບັງ ເຄື່ອງຜູກ ອຸປະກິເລດ ອະນຸໄສ ປະຣິຍຸດຖານ (ກິເລດທີ່ກຸ້ມຣຸມຈິດ) ຕັນຫາດັ່ງເຄືອເຂົາ ຄວາມປາຖະໜາວັດຖຸຕ່າງ ໆ ຮາກເຫງົ້າແຫ່ງທຸກ ເຫດແຫ່ງທຸກ ແດນເກີດແຫ່ງທຸກ ບ້ວງແຫ່ງມານ ເບັດແຫ່ງມານ ເຫຍື່ອແຫ່ງມານ ວິໄສແຫ່ງມານ ບ່ອນອາໄສແຫ່ງມານ ໂຄຈອນແຫ່ງມານ ເຄື່ອງຜູກແຫ່ງມານ ຕັນຫາດັ່ງແມ່ນ້ຳ ຕັນຫາດັ່ງຕາໜ່າງ ຕັນຫາດັ່ງຕ່ອງໂຊ່ ຕັນຫາດັ່ງມະຫາສະມຸດ ອະພິດຊາ ອະກຸສົນມູນ ຄື ໂລພະ ນີ້ຕັດຮຽກວ່າ ຄວາມຢາກ ເປັນເຄື່ອງສາບທາ ຄືຂ້ອງກ່ຽວ ຜູກພັນ ເຮັດໃຫ້ເຂົ້າໄປເສົ້າໝອງ ໂລກຖືກຄວາມຢາກນີ້ສາບທາ ລູບທາ ເຮັດໃຫ້ໝອງມົວ ແປດເປື້ອນ ປະປົນ ເກາະຕິດ ກ່ຽວພັນ ພົວພັນໄວ້ ເຮົາຮຽກ ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດ ລວມຄວາມວ່າ ເຮົາຮຽກຄວາມຢາກວ່າເປັນເຄື່ອງສາບທາໂລກໄວ້

## ວ່າດ້ວຍທຸກ

ຄຳວ່າ ທຸກ ໃນຄຳວ່າ ທຸກເປັນໄພໃຫຍ່ຂອງໂລກນັ້ນ ອະທິບາຍວ່າ ຊາດທຸກ ຊະຣາທຸກ ພະຍາທິທຸກ ມໍຣະນະທຸກ ໂສກະ ປະຣິເທວະ ທຸກຂະໂທມະນັດ ອຸປາຍາດທຸກ ທຸກເນື່ອງຈາກການເກີດໃນນະຮົກ ທຸກເນື່ອງຈາກການເກີດໃນກຳເນີດເດຍຣັດສານ ທຸກເນື່ອງຈາກການເກີດໃນເຜດວິໄສ ທຸກເນື່ອງຈາກການເກີດໃນໂລກມະນຸດ ທຸກເນື່ອງຈາກການຖືກຳເນີດໃນທ້ອງ ທຸກເນື່ອງຈາກການຢູ່ໃນທ້ອງ ທຸກເນື່ອງຈາກການເກີດຈາກທ້ອງ ທຸກທີ່ສືບເນື່ອງມາຈາກຜູ້ເກີດ ທຸກຂອງຜູ້ເກີດທີ່ເນື່ອງມາຈາກຜູ້ອື່ນ ທຸກທີ່ເກີດຈາກຄວາມພະຍາຍາມຂອງຕົນເອງ ທຸກທີ່ເກີດຈາກຄວາມພະຍາຍາມຂອງຜູ້ອື່ນ ຄວາມທຸກກາຍ ຄວາມທຸກໃຈ ທຸກທີ່ເກີດຈາກສັງຂານ ທຸກທີ່ເກີດຈາກຄວາມຜັນປ່ຽນ ໂຣກທາງຕາ ໂຣກທາງຫູ ໂຣກທາງດັງ ໂຣກທາງລີ້ນ ໂຣກທາງກາຍ ໂຣກຫົວ ໂຣກຫູ ໂຣກປາກ ໂຣກແຂ້ວ ໂຣກໄອ ໂຣກຫືດ ໄຂ້ຫວັດ ໄຂ້ພິດ ໄຂ້ເຊື່ອງຊຶມ ໂຣກທ້ອງ ເປັນລົມສະຫລົບ ລົງແດງ ຈຸກສຽດ ອະຫິວາຕະກະໂຣກ ໂຣກຂີ້ທູດ ຝີ ກາກ ມອງຄໍ່ ລົມບ້າໝູ ຫິດເປື່ອຍ ຫິດດ້ານ ຫິດ ຫູດ ໂຣກລະລອກ ໂຣກບິຊ່ານ ໂຣກເບົາຫວານ ໂຣກເຣີມ ໂຣກພຸພອງ ໂຣກຣິດສີດວງທະວານ ຄວາມເຈັບປ່ວຍທີ່ເກີດຈາກບີ ຄວາມເຈັບປ່ວຍທີ່ເກີດຈາກເສມຫະ ຄວາມເຈັບປ່ວຍທີ່ເກີດຈາກລົມ ໄຂ້ສັນນິບາດ ຄວາມເຈັບປ່ວຍທີ່ເກີດຈາກການປ່ຽນລະດູການ ຄວາມເຈັບປ່ວຍທີ່ເກີດຈາກການຜັດປ່ຽນ

ອິລິຍາບົດບໍ່ໄດ້ສ່ວນກັນ ຄວາມເຈັບປ່ວຍທີ່ເກີດຈາກຄວາມພາກພຽນເກີນກຳລັງຄວາມເຈັບປ່ວຍທີ່ເກີດຈາກຜົນກຳ ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ປວດອຸດຈາຣະ ປວດປັດສາວະ ທຸກທີ່ເກີດຈາກສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ແລະສັດເລືອຄານ ທຸກຍ້ອນມານດາຕາຍ ທຸກຍ້ອນບິດາຕາຍ ທຸກຍ້ອນອ້າຍນ້ອງຊາຍຕາຍ ທຸກຍ້ອນເອື້ອຍນ້ອງສາວຕາຍ ທຸກຍ້ອນບຸດຕາຍ ທຸກຍ້ອນທິດາຕາຍ ທຸກຍ້ອນຄວາມພິນາດຂອງຍາດ ທຸກຍ້ອນໂພຄະຊັບພິນາດ ທຸກຍ້ອນຄວາມເສຍຫາຍທີ່ເກີດຈາກໂຣກ ທຸກຍ້ອນສີນວິບັດ ທຸກຍ້ອນທິດຖິວິບັດ

ຄວາມເກີດຂຶ້ນແຫ່ງທຳເຫຼົ່າໃດຜາກົດໃນເບື້ອງຕົ້ນ ຄວາມດັບແຫ່ງທຳເຫຼົ່ານັ້ນຍ່ອມຜາກົດໃນເບື້ອງປາຍ ວິບາກອາໄສກຳ ກຳອາໄສວິບາກ ຮູບອາໄສນາມ ນາມອາໄສຮູບ ນາມຮູບເປັນໄປຕາມຊາດ ຊະຣາຕິດຕາມ ພະຍາທິຄອບງຳ ມໍຣະນະຍ່ຳຍີ ຕົກຢູ່ໃນຄວາມທຸກ ບໍ່ມີບ່ອນປົກປ້ອງ ບໍ່ມີບ່ອນຫຼົບຫຼີກ ບໍ່ມີບ່ອນເພິ່ງ ບໍ່ມີບ່ອນອາໄສ ນີ້ຕັດຮຽກວ່າ ທຸກ ທຸກນີ້ ເປັນໄພ ເປັນໄພໃຫຍ່ ເປັນເຄື່ອງບີບຄັ້ນ ເປັນສິ່ງກະທົບກະທັ່ງ ເປັນອັນຕະລາຍ ເປັນອຸປະສັກຂອງໂລກນີ້ ລວມຄວາມວ່າ ທຸກເປັນໄພໃຫຍ່ຂອງໂລກນັ້ນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອະຊິຕະ)

ໂລກຖືກອະວິດຊາຫຸ້ມຫໍ່ໄວ້
ໂລກບໍ່ສົດໃສຍ້ອນຄວາມຂີ້ຖີ່ ແລະຄວາມຜະໝາດ
ເຮົາຮຽກຄວາມຢາກວ່າເປັນເຄື່ອງສາບທາໂລກໄວ້
ທຸກເປັນໄພໃຫຍ່ຂອງໂລກນັ້ນ

[໓] (ທ່ານອະຊິຕະທູນຖາມ ດັ່ງນີ້)

ກະແສທັງຫຼາຍຍ່ອມໄຫຼໄປໃນທີ່ທັງປວງ
ອັນໃດເປັນເຄື່ອງກັ້ນກະແສທັງຫຼາຍ
ຂໍພຣະອົງໂຜດຕັດບອກທຳເຄື່ອງປ້ອງກັນກະແສທັງຫຼາຍ
ອັນໃດປິດກັ້ນກະແສທັງຫຼາຍໄດ້ (໓)

ຄຳວ່າ ກະແສທັງຫຼາຍ ໃນຄຳວ່າ ກະແສທັງຫຼາຍຍ່ອມໄຫຼໄປໃນທີ່ທັງປວງ ໄດ້ແກ່ກະແສຕັນຫາ ກະແສທິດຖິ ກະແສກິເລດ ກະແສທຸດຈະຣິດ ກະແສອະວິດຊາ

ຄຳວ່າ ໃນທີ່ທັງປວງ ໄດ້ແກ່ ໃນອາຍະຕະນະທັງປວງ

ຄຳວ່າ ຍ່ອມໄຫຼໄປ ໄດ້ແກ່ ຍ່ອມໄຫຼໄປ ຄື ຊ່ານໄປ ຫຼັ່ງໄຫຼ ເປັນໄປ ອະທິບາຍວ່າກະແສຈາກຕາ ຍ່ອມໄຫຼໄປ ຄື ຊ່ານໄປ ຫຼັ່ງໄຫຼ ເປັນໄປໃນຮູບ ກະແສຈາກຫູຍ່ອມໄຫຼໄປ ຯລຯ ໃນສຽງ ກະແສຈາກດັງຍ່ອມໄຫຼໄປ ຯລຯ ໃນກິ່ນ ກະແສຈາກລີ້ນຍ່ອມໄຫຼໄປ ຯລຯ ໃນ

ອິດ ກະແສຈາກກາຍຍ່ອມໄຫຼໄປ ໆລໆ ໃນໂຜດຖັບພະ ກະແສຈາກໃຈ ຍ່ອມໄຫຼໄປ ຄື ຊ່ານໄປ ຫຼັ່ງໄຫຼ ເປັນໄປໃນທຳມາອົມ ຄື ຮູບຕັນຫາຍ່ອມໄຫຼໄປ ຄື ຊ່ານໄປ ຫຼັ່ງໄຫຼ ເປັນໄປທາງຕາ ສັດທະຕັນຫາຍ່ອມໄຫຼໄປ ຄື ຊ່ານໄປ ຫຼັ່ງໄຫຼ ເປັນໄປທາງຫູ ຄັນທະຕັນຫາຍ່ອມໄຫຼໄປ ໆລໆ ທາງດັງ ຣະສະຕັນຫາຍ່ອມໄຫຼໄປ ໆລໆ ທາງລີ້ນ ໂຜດຖັບພະຕັນຫາຍ່ອມໄຫຼໄປ ໆລໆ ທາງກາຍ ທຳມະຕັນຫາຍ່ອມໄຫຼໄປ ຄື ຊ່ານໄປ ຫຼັ່ງໄຫຼ ເປັນໄປທາງໃຈ ລວມຄວາມວ່າ ກະແສທັງຫຼາຍຍ່ອມໄຫຼໄປໃນທີ່ທັງປວງ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານອະຊິຕະທູນຖາມ ດັ່ງນີ້ ເປັນບົດສົນທິ ເປັນຄຳເຊື່ອມບົດ ເປັນຄຳທີ່ເຮັດບົດໃຫ້ບໍລິບູນ ເປັນຄວາມສຳພັນແຫ່ງອັກສອນ ເປັນຄວາມສະຫຼະສະຫຼວຍແຫ່ງພະຍັນຊະນະ ຄຳວ່າ ດັ່ງນີ້ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ທ່ານ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາລົບ ຄຳວ່າ ທ່ານນີ້ ເປັນຄຳກ່າວທີ່ມີຄວາມເຄົາລົບ ແລະຄວາມຢຳເກງ

ຄຳວ່າ ອະຊິຕະ ເປັນຊື່ຂອງພາມນັ້ນ ຄື ເປັນການກ່າວເຖິງ ການຂະໜານນາມ ການບັນຍັດ ຊື່ທີ່ຮຽກກັນ ຊື່ ການຕັ້ງຊື່ ຊື່ທີ່ຕັ້ງໃຫ້ ພາສາ ພະຍັນຊະນະ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານອະຊິຕະທູນຖາມ ດັ່ງນີ້

ຄຳວ່າ ອັນໃດເປັນເຄື່ອງກັ້ນກະແສທັງຫຼາຍ ອະທິບາຍວ່າ ອັນໃດເປັນເຄື່ອງຂວາງເຄື່ອງກັ້ນ ຄື ເຄື່ອງປ້ອງກັນ ຮັກສາ ຄຸ້ມຄອງກະແສທັງຫຼາຍ ລວມຄວາມວ່າ ອັນໃດເປັນເຄື່ອງກັ້ນກະແສທັງຫຼາຍ

ຄຳວ່າ ຂໍພຣະອົງໂຜດຕັດບອກທຳເຄື່ອງປ້ອງກັນກະແສທັງຫຼາຍ

ອະທິບາຍວ່າ ຂໍພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດທຳເຄື່ອງຂວາງ ເຄື່ອງກັ້ນ ເຄື່ອງປ້ອງກັນ ຮັກສາ ຄຸ້ມຄອງກະແສທັງຫຼາຍ ລວມຄວາມວ່າ ຂໍພຣະອົງໂຜດຕັດບອກທຳເຄື່ອງປ້ອງກັນກະແສທັງຫຼາຍ

ຄຳວ່າ ອັນໃດປິດກັ້ນກະແສທັງຫຼາຍໄດ້ ອະທິບາຍວ່າ ກະແສທັງຫຼາຍ ຖືກອັນໃດປິດກັ້ນ ຄື ຖືກຕັດຂາດ ຈຶ່ງບໍ່ໄຫຼໄປ ບໍ່ຊ່ານໄປ ບໍ່ຫຼັ່ງໄຫຼ ບໍ່ເປັນໄປ ລວມຄວາມວ່າ ອັນໃດປິດກັ້ນກະແສທັງຫຼາຍໄດ້ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

(ທ່ານອະຊິຕະທູນຖາມ ດັ່ງນີ້)

ກະແສທັງຫຼາຍຍ່ອມໄຫຼໄປໃນທີ່ທັງປວງ
ອັນໃດເປັນເຄື່ອງກັ້ນກະແສທັງຫຼາຍ
ຂໍພຣະອົງໂຜດຕັດບອກທຳເຄື່ອງປ້ອງກັນກະແສທັງຫຼາຍ
ອັນໃດປິດກັ້ນກະແສທັງຫຼາຍໄດ້

[໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອະຊິຕະ)

ກະແສເຫຼົ່າໃດໃນໂລກ
ສະຕິເປັນເຄື່ອງກັ້ນກະແສເຫຼົ່ານັ້ນໄດ້
ເຮົາກ່າວທຳເຄື່ອງປ້ອງກັນກະແສທັງຫຼາຍ
ປັນຍາປິດກັ້ນກະແສເຫຼົ່ານັ້ນໄດ້ (໔)

ຄຳວ່າ ກະແສເຫຼົ່າໃດໃນໂລກ ອະທິບາຍວ່າ ກະແສເຫຼົ່ານັ້ນໃດທີ່ເຮົາຕອບ ຊີ້ແຈ້ງ ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດໄວ້ ຄື ກະແສຕັນຫາ ກະແສທິດຖິ ກະແສກິເລດ ກະແສທຸດຈະຣິດ ກະແສອະວິດຊາ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ ລວມຄວາມວ່າ ກະແສເຫຼົ່າໃດໃນໂລກ

ຄຳວ່າ ອະຊິຕະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ສະຕິ ໃນຄຳວ່າ ສະຕິເປັນເຄື່ອງກັ້ນກະແສເຫຼົ່ານັ້ນໄດ້ ອະທິບາຍວ່າ ສະຕິ ຄື ຄວາມຕາມຣະລຶກເຖິງ ຄວາມຣະລຶກໄດ້ສະເພາະໜ້າ ສະຕິ ຄື ຄວາມຣະລຶກໄດ້ ຄວາມຈຳໄດ້ ຄວາມບໍ່ເລື່ອນລອຍ ຄວາມບໍ່ຫຼົງລືມ ສະຕິ ຄື ສະຕິນຊິ (ສະຕິທີ່ເປັນໃຫຍ່) ສະຕິພະລະ (ສະຕິທີ່ເປັນກຳລັງ) ສຳມາສະຕິ (ຣະລຶກຊອບ) ສະຕິສຳໂພດຊົງ (ສະຕິທີ່ເປັນອົງແຫ່ງການຕັດສະຣູ້ທຳ) ເອກາຍະນະມັກ (ມັກທີ່ເປັນທາງເອກ) ນີ້ ຕັດຮຽກວ່າ ສະຕິ

ຄຳວ່າ ເປັນເຄື່ອງກັ້ນ ອະທິບາຍວ່າ ເປັນເຄື່ອງຂວາງ ເປັນເຄື່ອງກັ້ນ ຄື ເປັນເຄື່ອງປ້ອງກັນ ຮັກສາ ຄຸ້ມຄອງ ລວມຄວາມວ່າ ສະຕິເປັນເຄື່ອງກັ້ນກະແສເຫຼົ່ານັ້ນໄດ້

ຄຳວ່າ ເຮົາກ່າວທຳເຄື່ອງປ້ອງກັນກະແສທັງຫຼາຍ ອະທິບາຍວ່າ ເຮົາກ່າວ

ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດເຄື່ອງຂວາງ ເຄື່ອງກັ້ນ ເຄື່ອງປ້ອງກັນ ຮັກສາ ຄຸ້ມຄອງກະແສທັງຫຼາຍ ລວມຄວາມວ່າ ເຮົາກ່າວທຳເຄື່ອງປ້ອງກັນກະແສທັງຫຼາຍ

ຄຳວ່າ ປັນຍາປິດກັ້ນກະແສເຫຼົ່ານັ້ນໄດ້ ອະທິບາຍວ່າ

ຄຳວ່າ ປັນຍາ ໄດ້ແກ່ ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງາຍ ຄວາມເລືອກເຟັ້ນທຳ ສຳມາທິດຖິ

ຄຳວ່າ ປັນຍາປິດກັ້ນກະແສເຫຼົ່ານັ້ນໄດ້ ອະທິບາຍວ່າ ກະແສເຫຼົ່ານັ້ນປັນຍາປິດກັ້ນໄດ້ ຄື ຕັດຂາດໄປ ຈຶ່ງບໍ່ໄຫຼໄປ ບໍ່ຊ່ານໄປ ບໍ່ຫຼັ່ງໄຫຼ ບໍ່ເປັນໄປ ກະແສເຫຼົ່ານັ້ນປັນຍາຂອງຜູ້ຮູ້ ຜູ້ເຫັນຢູ່ວ່າ ສັງຂານທັງປວງບໍ່ທ່ຽງ ປິດກັ້ນໄດ້ ຄື ຕັດຂາດໄປ ຈຶ່ງບໍ່ໄຫຼໄປ ບໍ່ຊ່ານໄປ ບໍ່ຫຼັ່ງໄຫຼ ບໍ່ເປັນໄປ ກະແສເຫຼົ່ານັ້ນປັນຍາຂອງຜູ້ຮູ້ ຜູ້ເຫັນຢູ່ວ່າ ສັງຂານທັງປວງເປັນທຸກ ປິດກັ້ນໄດ້ ຄື

ຕັດຂາດໄປ ຈຶ່ງບໍ່ໄຫຼໄປ ບໍ່ຊ່ານໄປ ບໍ່ຫຼັ່ງໄຫຼ ບໍ່ເປັນໄປ ກະແສເຫຼົ່ານັ້ນປັນຍາຂອງຜູ້ຮູ້ ຜູ້ເຫັນຢູ່ວ່າ ທຳທັງປວງເປັນອະນັດຕາ ປິດກັ້ນໄດ້ ຄື ຕັດຂາດໄປ ຈຶ່ງບໍ່ໄຫຼໄປ ບໍ່ຊ່ານໄປ ບໍ່ຫຼັ່ງໄຫຼ ບໍ່ເປັນໄປ

## ວ່າດ້ວຍປະຕິດຈະສະມຸບບາດ

ກະແສເຫຼົ່ານັ້ນປັນຍາຂອງຜູ້ຮູ້ ຜູ້ເຫັນຢູ່ວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ປິດກັ້ນໄດ້ ຄື ຕັດຂາດໄປ ຈຶ່ງບໍ່ໄຫຼໄປ ບໍ່ຊ່ານໄປ ບໍ່ຫຼັ່ງໄຫຼ ບໍ່ເປັນໄປ

ກະແສເຫຼົ່ານັ້ນ ປັນຍາຂອງຜູ້ຮູ້ຜູ້ເຫັນຢູ່ ວ່າ

| | | | |
|---|---|---|---|
| ຍ້ອນສັງຂານເປັນປັດໄຈ | ວິນຍານ | ຈຶ່ງມີ | ฯລฯ |
| ຍ້ອນວິນຍານເປັນປັດໄຈ | ນາມຮູບ | ຈຶ່ງມີ | ฯລฯ |
| ຍ້ອນນາມຮູບເປັນປັດໄຈ | ສາລະຍະຕະນະ | ຈຶ່ງມີ | ฯລฯ |
| ຍ້ອນສາລະຍະຕະນະເປັນປັດໄຈ | ຜັດສະ | ຈຶ່ງມີ | ฯລฯ |
| ຍ້ອນຜັດສະເປັນປັດໄຈ | ເວທະນາ | ຈຶ່ງມີ | ฯລฯ |
| ຍ້ອນເວທະນາເປັນປັດໄຈ | ຕັນຫາ | ຈຶ່ງມີ | ฯລฯ |
| ຍ້ອນຕັນຫາເປັນປັດໄຈ | ອຸປາທານ | ຈຶ່ງມີ | ฯລฯ |
| ຍ້ອນອຸປາທານເປັນປັດໄຈ | ພົບ | ຈຶ່ງມີ | ฯລฯ |
| ຍ້ອນພົບເປັນປັດໄຈ | ຊາດ | ຈຶ່ງມີ | ฯລฯ |

ຍ້ອນຊາດເປັນປັດໄຈ ຊະຣາ ມໍຣະນະຈຶ່ງມີ ປິດກັ້ນໄດ້ ຄື ຕັດຂາດໄປ ຈຶ່ງບໍ່ໄຫຼໄປ ບໍ່ຊ່ານໄປ ບໍ່ຫຼັ່ງໄຫຼ ບໍ່ເປັນໄປ

ກະແສເຫຼົ່ານັ້ນປັນຍາຂອງຜູ້ຮູ້ ຜູ້ເຫັນຢູ່ວ່າ

| | | | |
|---|---|---|---|
| ຍ້ອນອະວິດຊາດັບ | ສັງຂານ | ຈຶ່ງດັບ | ฯລฯ |
| ຍ້ອນສັງຂານດັບ | ວິນຍານ | ຈຶ່ງດັບ | ฯລฯ |
| ຍ້ອນວິນຍານດັບ | ນາມຮູບ | ຈຶ່ງດັບ | ฯລฯ |
| ຍ້ອນນາມຮູບດັບ | ສາລະຍະຕະນະ | ຈຶ່ງດັບ | ฯລฯ |
| ຍ້ອນສາລະຍະຕະນະດັບ | ຜັດສະ | ຈຶ່ງດັບ | ฯລฯ |
| ຍ້ອນຜັດສະດັບ | ເວທະນາ | ຈຶ່ງດັບ | ฯລฯ |
| ຍ້ອນເວທະນາດັບ | ຕັນຫາ | ຈຶ່ງດັບ | ฯລฯ |
| ຍ້ອນຕັນຫາດັບ | ອຸປາທານ | ຈຶ່ງດັບ | ฯລฯ |
| ຍ້ອນອຸປາທານດັບ | ພົບ | ຈຶ່ງດັບ | ฯລฯ |
| ຍ້ອນພົບດັບ | ຊາດ | ຈຶ່ງດັບ | ฯລฯ |

ຍ້ອນຊາດດັບ ຊະຣາແລະມໍຣະນະຈຶ່ງດັບ ປິດກັ້ນໄດ້ ຄື ຕັດຂາດໄປ ຈຶ່ງບໍ່ໄຫຼໄປ ບໍ່ຊ່ານໄປ ບໍ່ຫຼັ່ງໄຫຼ ບໍ່ເປັນໄປ

ກະແສເຫຼົ່ານັ້ນ ປັນຍາຂອງຜູ້ຮູ້ ຜູ້ເຫັນຢູ່ວ່າ ນີ້ທຸກ ຯລຯ ນີ້ທຸກຂະສະມຸໄທ ຯລຯ ນີ້ທຸກຂະນິໂຣທະ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາປິດກັ້ນໄດ້ ຄື ຕັດຂາດໄປ ຈຶ່ງບໍ່ໄຫຼໄປ ບໍ່ຊ່ານໄປ ບໍ່ຫຼັ່ງໄຫຼ ບໍ່ເປັນໄປ ກະແສເຫຼົ່ານັ້ນ ປັນຍາຂອງຜູ້ຮູ້ ຜູ້ເຫັນຢູ່ວ່າ ທຳເຫຼົ່ານີ້ອາສະວະ ຯລຯ ນີ້ອາສະວະສະມຸໄທ ຯລຯ ນີ້ອາສະວະນິໂຣທະ ຯລຯ ນີ້ອາສະວະນິໂຣທະຄາມີນີປະຕິປະທາ ປິດກັ້ນໄດ້ ຄື ຕັດຂາດໄປ ຈຶ່ງບໍ່ໄຫຼໄປ ບໍ່ຊ່ານໄປ ບໍ່ຫຼັ່ງໄຫຼ ບໍ່ເປັນໄປ

ກະແສເຫຼົ່ານັ້ນ ປັນຍາຂອງຜູ້ຮູ້ ຜູ້ເຫັນຢູ່ວ່າ ເຫຼົ່ານີ້ຄືທຳທີ່ຄວນຮູ້ຍິ່ງ ຯລຯ ເຫຼົ່ານີ້ຄືທຳທີ່ຄວນກຳນົດຮູ້ ຯລຯ ເຫຼົ່ານີ້ຄືທຳທີ່ຄວນລະ ຯລຯ ເຫຼົ່ານີ້ຄືທຳທີ່ຄວນຈະເລີນ ຯລຯ ເຫຼົ່ານີ້ຄືທຳທີ່ຄວນເຮັດໃຫ້ແຈ້ງ ປິດກັ້ນໄດ້ ຄື ຕັດຂາດໄປ ຈຶ່ງບໍ່ໄຫຼໄປ ບໍ່ຊ່ານໄປ ບໍ່ຫຼັ່ງໄຫຼ ບໍ່ເປັນໄປ

ກະແສເຫຼົ່ານັ້ນ ປັນຍາຂອງຜູ້ຮູ້ ຜູ້ເຫັນເຫດເກີດ ເຫດດັບ ຄຸນ ໂທດ ແລະການສະລັດອອກແຫ່ງຜັດສາຍະຕະນະ ໖ ປິດກັ້ນໄດ້ ຄື ຕັດຂາດໄປ ຈຶ່ງບໍ່ໄຫຼໄປ ບໍ່ຊ່ານໄປ ບໍ່ຫຼັ່ງໄຫຼ ບໍ່ເປັນໄປ

ກະແສເຫຼົ່ານັ້ນ ປັນຍາຂອງຜູ້ຮູ້ ຜູ້ເຫັນເຫດເກີດ ເຫດດັບ ຄຸນ ໂທດ ແລະການສະລັດອອກຈາກອຸປາທານຂັນ ໕ ຯລຯ ກະແສເຫຼົ່ານັ້ນປັນຍາຂອງຜູ້ຮູ້ ຜູ້ເຫັນທຳ

ຄື ເຫດເກີດ ເຫດດັບ ຄຸນ ໂທດ ແລະການສະລັດອອກມະຫາພູຕະຮູບ ໔ ຯລຯ ກະແສເຫຼົ່ານັ້ນປັນຍາຂອງຜູ້ຮູ້ ຜູ້ເຫັນຢູ່ວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ປິດກັ້ນໄດ້ ຄື ຕັດຂາດໄປ ຈຶ່ງບໍ່ໄຫຼໄປ ບໍ່ຊ່ານໄປ ບໍ່ຫຼັ່ງໄຫຼ ບໍ່ເປັນໄປ ລວມຄວາມວ່າ ປັນຍາປິດກັ້ນກະແສເຫຼົ່ານັ້ນໄດ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອະຊິຕະ)

ກະແສເຫຼົ່າໃດໃນໂລກ
ສະຕິເປັນເຄື່ອງກັ້ນກະແສເຫຼົ່ານັ້ນໄດ້
ເຮົາກ່າວທຳເຄື່ອງປ້ອງກັນກະແສທັງຫຼາຍ
ປັນຍາປິດກັ້ນກະແສເຫຼົ່ານັ້ນໄດ້

[໕] (ທ່ານອະຊິຕະທູນຖາມ ດັ່ງນີ້)

ຂ້າແຕ່ ພຣະອົງຜູ້ນິຣະທຸກ ປັນຍາ ສະຕິ
ນາມແລະຮູບນີ້ດັບບ່ອນໃດ ຂ້າພຣະອົງໄດ້ທູນຖາມແລ້ວ
ຂໍພຣະອົງໂຜດຕັດບອກເນື້ອຄວາມນັ້ນ
ແກ່ຂ້າພຣະອົງດ້ວຍເທີ້ນ (໕)

## ວ່າດ້ວຍປັນຍາ

ຄຳວ່າ ປັນຍາ ໃນຄຳວ່າ ປັນຍາ ສະຕິ ອະທິບາຍວ່າ ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມເລືອກເຟັ້ນ ຄວາມສອດສ່ອງທຳ ຄວາມກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດສະເພາະ ພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ຢ່າງຊັດແຈ້ງ ຄວາມຄິດຄົ້ນ ຄວາມພິຈາຣະນາ ປັນຍາເໝືອນແຜ່ນດິນ ປັນຍາເຄື່ອງທຳລາຍກິເລດ ປັນຍາເຄື່ອງນຳທາງ ປັນຍາເຄື່ອງເຫັນແຈ້ງ ຄວາມຮູ້ດີ ປັນຍາເໝືອນປະຕັກ ປັນຍາ ປັນຍິນຊີ ປັນຍາພະລະ ປັນຍາເໝືອນອາວຸດ ປັນຍາເໝືອນຜາສາດ ຄວາມສະຫວ່າງຄືປັນຍາ ແສງສະຫວ່າງຄືປັນຍາ ປັນຍາເໝືອນດວງປະທີບ ປັນຍາເໝືອນດວງແກ້ວ ຄວາມບໍ່ຫຼົງງົມງາຍ ຄວາມເລືອກເຟັ້ນທຳ ສຳມາທິດຖິ

ຄຳວ່າ ສະຕິ ໄດ້ແກ່ ສະຕິ ຄື ຄວາມຣະລຶກເຖິງ ຯລຯ ສຳມາສະຕິ ລວມຄວາມວ່າ ປັນຍາ ສະຕິ ທ່ານອະຊິຕະທູນຖາມ ດັ່ງນີ້

ຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ຯລຯ ນາມແລະຣູບ ອະທິບາຍວ່າ

ຄຳວ່າ ນາມ ໄດ້ແກ່ ຂັນທີ່ບໍ່ແມ່ນຣູບ ໔ ຢ່າງ

ຄຳວ່າ ຣູບ ໄດ້ແກ່ ມະຫາພູຕະຣູບ ໔ ແລະຣູບທີ່ອາໄສມະຫາພູຕະຣູບທັງ ໔

ຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາລົບ ຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ນີ້ ເປັນຄຳກ່າວທີ່ມີຄວາມເຄົາລົບແລະຄວາມຢຳເກງ ລວມຄວາມວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ຯລຯ ນາມແລະຣູບ

ຄຳວ່າ ເນື້ອຄວາມນັ້ນແກ່ຂ້າພຣະອົງ ໃນຄຳວ່າ ຂ້າພຣະອົງໄດ້ທູນຖາມແລ້ວ ຂໍພຣະອົງໂຜດຕັດບອກເນື້ອຄວາມນັ້ນແກ່ຂ້າພຣະອົງດ້ວຍເທີ້ນ ໄດ້ແກ່ ເນື້ອຄວາມທີ່ຂ້າພຣະອົງທູນຖາມ ຄື ເນື້ອຄວາມທີ່ຂ້າພຣະອົງທູນຂໍ ເນື້ອຄວາມທີ່ຂ້າພຣະອົງທູນອັນເຊີນ ເນື້ອຄວາມທີ່ຂ້າພຣະອົງທູນໃຫ້ປະກາດ

ຄຳວ່າ ໄດ້ທູນຖາມແລ້ວ ໄດ້ແກ່ ໄດ້ທູນຖາມແລ້ວ ຄື ທູນຂໍແລ້ວ ທູນອັນເຊີນ ທູນໃຫ້ປະກາດແລ້ວ

ຄຳວ່າ ຂໍພຣະອົງໂຜດຕັດບອກ ໄດ້ແກ່ ຂໍພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດ ລວມຄວາມວ່າ ຂ້າພຣະອົງໄດ້ທູນຖາມແລ້ວ ຂໍພຣະອົງໂຜດຕັດບອກເນື້ອຄວາມນັ້ນແກ່ຂ້າພຣະອົງດ້ວຍເທີ້ນ

ຄຳວ່າ ນີ້ ດັບບ່ອນໃດ ໄດ້ແກ່ (ນາມແລະຣູບ) ນີ້ ດັບ ຄື ເຂົ້າໄປສະງົບ ເຖິງຄວາມຕັ້ງຢູ່ບໍ່ໄດ້ ຣະງັບໄປ ໃນບ່ອນໃດ ລວມຄວາມວ່າ ນີ້ ດັບບ່ອນໃດ ດ້ວຍເຫດນັ້ນ ພາມນັ້ນ ຈຶ່ງຂາບ ທູນວ່າ

(ທ່ານອະຊິຕະທູນຖາມ ດັ່ງນີ້)
ຂ້າແຕ່ພຣະອົງຜູ້ນິຣະທຸກ ປັນຍາ ສະຕິ
ນາມແລະຮູບນີ້ດັບບ່ອນໃດ ຂ້າພຣະອົງໄດ້ທູນຖາມແລ້ວ
ຂໍພຣະອົງໂຜດຕັດບອກເນື້ອຄວາມນັ້ນ
ແກ່ຂ້າພຣະອົງດ້ວຍເທີ້ນ

[໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ອະຊິຕະ ທ່ານໄດ້ຖາມບັນຫານັ້ນໃດ
ເຮົາຈະກ່າວແກ້ບັນຫານັ້ນແກ່ທ່ານ
ນາມແລະຮູບນັ້ນດັບບໍ່ມີສ່ວນເຫຼືອໃນບ່ອນໃດ
ນາມແລະຮູບນັ້ນດັບໄປໃນບ່ອນນັ້ນຍ້ອນວິນຍານດັບ (໖)

ຄຳວ່າ ນັ້ນໃດ ໃນຄຳວ່າ ທ່ານໄດ້ຖາມບັນຫານັ້ນໃດ ໄດ້ແກ່ ປັນຍາ ສະຕິ ນາມແລະຮູບ

ຄຳວ່າ ທ່ານໄດ້ຖາມ ໄດ້ແກ່ ທ່ານໄດ້ຖາມແລ້ວ ຄື ໄດ້ຂໍ ອັນເຊີນ ຂໍໃຫ້ປະກາດແລ້ວ ລວມຄວາມວ່າ ທ່ານໄດ້ຖາມບັນຫານັ້ນໃດ

ຄຳວ່າ ອະຊິຕະ ໃນຄຳວ່າ ອະຊິຕະ ฯລฯ ເຮົາຈະກ່າວແກ້ບັນຫານັ້ນແກ່ທ່ານ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ນັ້ນ ໄດ້ແກ່ ປັນຍາ ສະຕິ ນາມແລະຮູບ

ຄຳວ່າ ເຮົາຈະກ່າວແກ້ ໄດ້ແກ່ ເຮົາຈະກ່າວ ຄື ຈະບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດບັນຫານັ້ນ ລວມຄວາມວ່າ ອະຊິຕະฯລฯ ເຮົາຈະກ່າວແກ້ບັນຫານັ້ນແກ່ທ່ານ

ຄຳວ່າ ນາມ ໃນຄຳວ່າ ນາມແລະຮູບນັ້ນດັບບໍ່ມີສ່ວນເຫຼືອໃນບ່ອນໃດ ໄດ້ແກ່ ຂັນທີ່ບໍ່ແມ່ນຮູບ ໔

ຄຳວ່າ ຮູບ ໄດ້ແກ່ ມະຫາພູຕະຮູບ ໔ ແລະຮູບທີ່ອາໄສມະຫາພູຕະຮູບທັງ ໔

ຄຳວ່າ ບໍ່ມີສ່ວນເຫຼືອ ໄດ້ແກ່ ທຸກສິ່ງໂດຍອາການທັງໝົດ ທຸກຢ່າງບໍ່ມີເຫຼືອ ບໍ່ມີສ່ວນເຫຼືອໂດຍປະການທັງປວງ ຄຳວ່າ ບໍ່ມີສ່ວນເຫຼືອ ນີ້ ເປັນຄຳກ່າວລວມ ໆ ໄວ້ທັງໝົດ

ຄຳວ່າ ດັບ ໄດ້ແກ່ ດັບ ຄື ເຂົ້າໄປສະງົບ ເຖິງຄວາມຕັ້ງຢູ່ບໍ່ໄດ້ ຣະງັບໄປ ລວມຄວາມວ່າ ນາມແລະຮູບນັ້ນດັບບໍ່ມີສ່ວນເຫຼືອໃນບ່ອນໃດ

ຄຳວ່າ ນາມແລະຮູບນັ້ນດັບໄປໃນບ່ອນນັ້ນຍ້ອນວິນຍານດັບ ອະທິບາຍວ່າ ທຳ ຄື ນາມແລະຮູບ ທີ່ເພິ່ງເກີດໃນສົງສານມີເບື້ອງຕົ້ນ ແລະເບື້ອງປາຍຮູ້ບໍ່ໄດ້ ເວັ້ນພົບ ฯ ຍ່ອມດັບ ຄື ເຂົ້າ

ໄປສະງົບ ເຖິງຄວາມຕັ້ງຢູ່ບໍ່ໄດ້ ຣະງັບໄປໃນບ່ອນນັ້ນ ຍ້ອນວິນຍານອັນປະກອບດ້ວຍອະພິສັງຂານທຳດັບໄປ ດ້ວຍໂສດາປັດຕິມັກຄະຍານ

ທຳ ຄື ນາມ ແລະຮູບທີ່ເພິ່ງເກີດໃນພົບ ໕ ເວັ້ນພົບ ໔ ຍ່ອມດັບ ຄື ເຂົ້າໄປສະງົບ ເຖິງຄວາມຕັ້ງຢູ່ບໍ່ໄດ້ ຣະງັບໄປໃນບ່ອນນັ້ນ ຍ້ອນວິນຍານອັນປະກອບດ້ວຍອະພິສັງຂານທຳດັບໄປ ດ້ວຍສະກະທາຄາມິມັກຄະຍານ

ທຳ ຄື ນາມ ແລະຮູບທີ່ເພິ່ງເກີດໃນຮູບທາດ ຫຼື ອະຮູບທາດ ເວັ້ນພົບ ໑ ຍ່ອມດັບ ຄື ເຂົ້າໄປສະງົບ ເຖິງຄວາມຕັ້ງຢູ່ບໍ່ໄດ້ ຣະງັບໄປໃນບ່ອນນັ້ນ ຍ້ອນວິນຍານອັນປະກອບດ້ວຍອະພິສັງຂານທຳດັບໄປ ດ້ວຍອະນາຄາມິມັກຄະຍານ

ທຳ ຄື ນາມ ແລະຮູບທີ່ເພິ່ງເກີດ ຍ່ອມດັບ ຄື ເຂົ້າໄປສະງົບ ເຖິງຄວາມຕັ້ງຢູ່ບໍ່ໄດ້ ຣະງັບໄປໃນບ່ອນນັ້ນ ຍ້ອນວິນຍານອັນປະກອບດ້ວຍອະພິສັງຂານທຳດັບໄປ ດ້ວຍອະຣະຫັດຕະມັກຄະຍານ

ປັນຍາ ສະຕິ ນາມ ແລະຮູບ ຍ່ອມດັບ ຄື ເຂົ້າໄປສະງົບ ເຖິງຄວາມຕັ້ງຢູ່ບໍ່ໄດ້ ຣະງັບໄປໃນບ່ອນນັ້ນ ຍ້ອນຈະຣິມະວິນຍານຂອງພຣະອະຣະຫັນ ຜູ້ປະຣິນິບພານດ້ວຍອະນຸປາທິເສສະປະຣິນິບພານທາດດັບໄປ ລວມຄວາມວ່າ ນາມ ແລະຮູບນັ້ນດັບໄປໃນບ່ອນນັ້ນຍ້ອນວິນຍານດັບ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ອະຊິຕະ ທ່ານໄດ້ຖາມບັນຫານັ້ນໃດ
ເຮົາຈະກ່າວແກ້ບັນຫານັ້ນແກ່ທ່ານ
ນາມແລະຮູບນັ້ນດັບບໍ່ມີສ່ວນເຫຼືອໃນບ່ອນໃດ
ນາມແລະຮູບນັ້ນດັບໄປໃນບ່ອນນັ້ນຍ້ອນວິນຍານດັບ

[ໆ] (ທ່ານອະຊິຕະທູນຖາມ ດັ່ງນີ້)

ພຣະອະຣະຫັນຕະຂີນາສົບເຫຼົ່າໃດຜູ້ມີສັງຂາຕະທຳ
ແລະພຣະເສຂະເຫຼົ່າໃດທີ່ມີຢູ່ເປັນຈຳນວນຫຼາຍໃນບ່ອນນີ້
ຂ້າແຕ່ພຣະອົງຜູ້ນິຣະທຸກ ຂ້າພຣະອົງທູນຖາມແລ້ວ
ຂໍພຣະອົງຜູ້ມີປັນຍາ ໂຜດຕັດບອກການດຳເນີນຊີວິດ
ຂອງພຣະອະຣະຫັນຕະຂີນາສົບ ແລະພຣະເສຂະເຫຼົ່ານັ້ນເທີ້ນ (ໆ)

ຄຳວ່າ ພຣະອະຣະຫັນຕະຂີນາສົບເຫຼົ່າໃດຜູ້ມີສັງຂາຕະທຳ ອະທິບາຍວ່າ ພຣະອະຣະຫັນຕະ ຂີນາສົບຕັດຮຽກວ່າ ທ່ານຜູ້ມີສັງຂາຕະທຳ ຍ້ອນເຫດໃດ ພຣະອະຣະຫັນຕະຂີນາສົບພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກວ່າ ຜູ້ມີສັງຂາຕະທຳ ພຣະອະຣະຫັນຕະຂີນາສົບເຫຼົ່ານັ້ນ ຜູ້ມີສັງຂາຕະທຳ ຄື ຜູ້ຮູ້ທຳ ຜູ້ທຽບຄຽງທຳ ຜູ້ພິຈາລະນາທຳ ຜູ້ຮູ້ແຈ້ງທຳ ຜູ້ເຫັນແຈ້ງທຳ ໄດ້ແກ່

ຜູ້ມີສັງຂາຕະທຳ ຄື ຜູ້ຮູ້ທຳ ຜູ້ທ່ຽບຄຽງທຳ ຜູ້ພິຈາລະນາທຳ ຜູ້ຮູ້ແຈ້ງທຳ ຜູ້ເຫັນແຈ້ງທຳວ່າ ສັງຂານທັງປວງບໍ່ທ່ຽງ ຜູ້ມີສັງຂາຕະທຳ ຯລຯ ວ່າ ສັງຂານທັງປວງເປັນທຸກ ຜູ້ມີສັງຂາຕະທຳ ຯລຯ ວ່າ ທຳທັງປວງເປັນອະນັດຕາ ຜູ້ມີສັງຂາຕະທຳ ຯລຯ ວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຯລຯ ຜູ້ມີສັງຂາຕະທຳ ຜູ້ຮູ້ທຳ ຜູ້ທ່ຽບຄຽງທຳ ຜູ້ພິຈາລະນາທຳ ຜູ້ຮູ້ແຈ້ງທຳ ຜູ້ເຫັນແຈ້ງທຳ ວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ອີກໄນໜຶ່ງ ພຣະອະຣະຫັນຕະຂີນາສົບເຫຼົ່ານັ້ນຮູ້ຂັນ ທາດ ອາຍະຕະນະ ຄະຕິ ອຸປະບັດ (ການຖືກຳເນີດ) ປະຕິສົນທິ ພົບ ສົງສານ ວັດຕະແລ້ວ

ອີກໄນໜຶ່ງ ທ່ານເຫຼົ່ານັ້ນດຳຣົງຢູ່ໃນບ່ອນສຸດແຫ່ງຂັນ ໃນບ່ອນສຸດແຫ່ງທາດ ໃນບ່ອນສຸດແຫ່ງອາຍະຕະນະ ໃນບ່ອນສຸດແຫ່ງຄະຕິ ໃນບ່ອນສຸດແຫ່ງອຸປະບັດ ໃນບ່ອນສຸດແຫ່ງປະຕິສົນທິ ໃນບ່ອນສຸດແຫ່ງພົບ ໃນບ່ອນສຸດແຫ່ງສົງສານ ໃນບ່ອນສຸດແຫ່ງວັດຕະ ດຳຣົງຢູ່ໃນພົບສຸດທ້າຍ ອັດຕະພາບສຸດທ້າຍ ເປັນພຣະອະຣະຫັນ ຜູ້ຊົງຮ່າງກາຍສຸດທ້າຍໄວ້ ພຣະອະຣະຫັນຕະຂີນາສົບເຫຼົ່ານັ້ນມີພົບນີ້ເປັນພົບສຸດທ້າຍ ມີການປະຊຸມແຫ່ງຂັນເປັນຄັ້ງສຸດທ້າຍ ບໍ່ມີການວຽນເກີດ ວຽນຕາຍ ແລະພົບໃໝ່ກໍບໍ່ມີອີກ ຍ້ອນເຫດນັ້ນ ພຣະອະຣະຫັນຕະຂີນາສົບ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດຮຽກວ່າ ຜູ້ມີສັງຂາຕະທຳ ລວມຄວາມວ່າ ພຣະອະຣະຫັນຕະຂີນາສົບເຫຼົ່າໃດ ຜູ້ມີສັງຂາຕະທຳ

## ວ່າດ້ວຍສິກຂາ ៣

ຄຳວ່າ ເສຂະ ໃນຄຳວ່າ ແລະພຣະເສຂະເຫຼົ່າໃດທີ່ມີຢູ່ເປັນຈຳນວນຫຼາຍໃນບ່ອນນີ້ ອະທິບາຍວ່າ ຍ້ອນເຫດໃດ ຈຶ່ງຮຽກວ່າພຣະເສຂະ ຍ້ອນທ່ານຍັງຕ້ອງສຶກສາ ຈຶ່ງຮຽກວ່າພຣະເສຂະ ທ່ານຍັງຕ້ອງສຶກສາອັນໃດ ທ່ານຍັງຕ້ອງສຶກສາອະທິສີນສິກຂາແດ່ ອະທິຈິດຕະສິກຂາແດ່ ອະທິປັນຍາສິກຂາແດ່

ອະທິສີນສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ສົມບູນດ້ວຍ ອາຈາຣະ ແລະໂຄຈອນ ເຫັນໄພໃນໂທດພຽງເລັກໜ້ອຍ ສະມາທານສຶກສາໃນ ສິກຂາບົດທັງຫຼາຍຢູ່ ຄື ສີນຂັນນ້ອຍ ສີນຂັນໃຫຍ່ ສີນເປັນບ່ອນເພິ່ງ ເປັນເບື້ອງຕົ້ນ ເປັນຄວາມປະພຶດ ເປັນຄວາມສັງລວມ ເປັນຄວາມຣະວັງ ເປັນຫົວໜ້າ ເປັນປະທານເພື່ອຄວາມເຖິງພ້ອມແຫ່ງທຳທີ່ເປັນກຸສົນ ນີ້ຊື່ວ່າອະທິສີນສິກຂາ

ອະທິຈິດຕະສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານ ທີ່ມີວິຕົກ ວິຈານ ປີຕິແລະສຸກ ອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ບັນລຸທຸຕິຍະຊານ ฯລฯບັນລຸຕະຕິຍະຊານฯລฯ ບັນລຸຈະຕຸດຖະຊານຢູ່ฯລฯ ນີ້ຊື່ວ່າ ອະທິຈິດຕະສິກຂາ

ອະທິປັນຍາສິກຂາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ມີປັນຍາ ປະກອບດ້ວຍປັນຍາອັນປະເສີດ ຮູ້ເຖິງຄວາມເກີດແລະຄວາມດັບ ເພີກຖອນກິເລດ ໃຫ້ບັນລຸເຖິງຄວາມສິ້ນທຸກໂດຍຊອບ ທ່ານຮູ້ຕາມຄວາມເປັນຈິງວ່າ ນີ້ທຸກ ฯລฯ ນີ້ທຸກຂະສະມຸໄທ (ເຫດເກີດທຸກ) ฯລฯ ນີ້ທຸກຂະນິໂຣທະ (ຄວາມດັບທຸກ) ฯລฯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ (ປະຕິປະທາເຄື່ອງດຳເນີນໄປສູ່ຄວາມດັບທຸກ) ฯລฯ ເຫຼົ່ານີ້ອາສະວະฯລฯ ນີ້ອາສະວະສະມຸໄທฯລฯ ນີ້ອາສະວະນິໂຣທະ ທ່ານຮູ້ຕາມເປັນຈິງວ່າ ນີ້ອາສະວະນິໂຣທະຄາມິນີປະຕິປະທາ ນີ້ຊື່ວ່າ ອະທິປັນຍາສິກຂາ

ສິກຂາ ໓ ເຫຼົ່ານີ້ ເມື່ອພຣະເສຂະນຶກເຖິງ ຊື່ວ່າຍ່ອມສຶກສາ ເມື່ອຮູ້ ຊື່ວ່າຍ່ອມສຶກສາ ເມື່ອເຫັນ ຊື່ວ່າຍ່ອມສຶກສາ ເມື່ອອະທິຖານຈິດ ຊື່ວ່າຍ່ອມສຶກສາ ເມື່ອນ້ອມໃຈເຊື່ອດ້ວຍສັດທາ ຊື່ວ່າຍ່ອມສຶກສາ ເມື່ອປະຄອງຄວາມພຽນ ຊື່ວ່າຍ່ອມສຶກສາ ເມື່ອຕັ້ງສະຕິ ຊື່ວ່າຍ່ອມສຶກສາ ເມື່ອຕັ້ງໃຈໝັ້ນ ຊື່ວ່າຍ່ອມສຶກສາ ເມື່ອຮູ້ແຈ້ງດ້ວຍປັນຍາ ຊື່ວ່າຍ່ອມສຶກສາ ເມື່ອຮູ້ແຈ້ງທຳທີ່ຄວນຮູ້ແຈ້ງ ຊື່ວ່າຍ່ອມສຶກສາ ເມື່ອກຳນົດຮູ້ທຳທີ່ຄວນກຳນົດຮູ້ ຊື່ວ່າຍ່ອມສຶກສາ ເມື່ອລະທຳທີ່ຄວນລະ ຊື່ວ່າຍ່ອມສຶກສາ ເມື່ອຈະເລີນທຳທີ່ຄວນຈະເລີນ ຊື່ວ່າຍ່ອມສຶກສາ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າຍ່ອມສຶກສາ ຄື ຍ່ອມປະພຶດ ປະພຶດເອື້ອເຟື້ອ ປະພຶດເອື້ອເຟື້ອໂດຍຊອບ ສະມາທານປະພຶດ ຍ້ອນເຫດນັ້ນ ຈຶ່ງຕັດຮຽກວ່າ ພຣະເສຂະ

ຄຳວ່າ ເປັນຈຳນວນຫຼາຍ ໄດ້ແກ່ ຫຼາຍແທ້ ພຣະເສຂະເຫຼົ່ານີ້ ຄື ພຣະໂສດາບັນແລະຜູ້ປະຕິບັດເພື່ອໂສດາປັດຕິຜົນ ພຣະສະກະທາຄາມີ ແລະຜູ້ປະຕິບັດເພື່ອສະກະທາຄາມີຜົນພຣະອະນາຄາມີ ແລະຜູ້ປະຕິບັດເພື່ອອະນາຄາມີຜົນ ພຣະອະຣະຫັນ ແລະຜູ້ປະຕິບັດເພື່ອອະຣະຫັດຕະຜົນ

ຄຳວ່າ ໃນບ່ອນນີ້ ໄດ້ແກ່ ໃນຄວາມເຫັນນີ້ ຄວາມຖືກໃຈນີ້ ຄວາມພໍໃຈນີ້ ຄວາມຍຶດຖືນີ້ ທຳນີ້ ວິໄນນີ້ ທຳວິໄນນີ້ ປາພົດນີ້ ພົມມະຈັນນີ້ ສັດຖຸສາດນີ້ ອັດຕະພາບນີ້ ມະນຸດໂລກນີ້ ລວມຄວາມວ່າ ແລະພຣະເສຂະເຫຼົ່າໃດທີ່ມີຢູ່ເປັນຈຳນວນຫຼາຍໃນບ່ອນນີ້

ຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ຂ້າພຣະອົງທູນຖາມແລ້ວ ຂໍພຣະອົງຜູ້ມີປັນຍາ ໂຜດຕັດບອກການດຳເນີນຊີວິດຂອງພຣະອະຣະຫັນຕະຂີນາສົບ ແລະພຣະເສຂະເຫຼົ່ານັ້ນເທີ້ນ ອະທິບາຍວ່າ ແມ່ນພຣະອົງຜູ້ມີປັນຍາ ຄື ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຣູ້ ມີຍານ ມີປັນຍາແຈ່ມກະຈ່າງ ມີປັນຍາເຄື່ອງທຳລາຍກິເລດ (ໂຜດຕັດບອກ) ການດຳເນີນຊີວິດ ຄື ຈະຣິ

ຍາ ຄວາມປະພຶດ ຄວາມປະພຶດເອື້ອເຟື້ອ ອາຈາຣະ ໂຄຈອນ ວິຫາຣະທຳ[១] ປະຕິປະທາຂອງທ່ານຜູ້ມີສັງຂາຕະທຳ ແລະພຣະເສຂະເຫຼົ່ານັ້ນເທີ້ນ

ຄຳວ່າ ຂ້າພຣະອົງທູນຖາມແລ້ວ ໄດ້ແກ່ ທູນຖາມແລ້ວ ຄື ທູນປຸດສາ ທູນຂໍ ທູນອັນເຊີນ ທູນໃຫ້ປະກາດ

ຄຳວ່າ ໂຜດຕັດບອກ ໄດ້ແກ່ ໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດ

ຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາລົບ ຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ນີ້ ເປັນຄຳກ່າວທີ່ມີຄວາມເຄົາລົບແລະຄວາມຢຳເກງ ລວມຄວາມວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ຂ້າພຣະອົງທູນຖາມແລ້ວ ຂໍພຣະອົງຜູ້ມີປັນຍາ ໂຜດຕັດບອກການດຳເນີນຊີວິດຂອງພຣະອະຣະຫັນຕະຂີນາສົບ ແລະພຣະເສຂະເຫຼົ່ານັ້ນເທີ້ນ ດ້ວຍເຫດນັ້ນ ພາມນັ້ນຈຶ່ງທູນຖາມວ່າ

ພຣະອະຣະຫັນຕະຂີນາສົບເຫຼົ່າໃດຜູ້ມີສັງຂາຕະທຳ
ແລະພຣະເສຂະເຫຼົ່າໃດທີ່ມີຢູ່ເປັນຈຳນວນຫຼາຍໃນບ່ອນນີ້
ຂ້າແຕ່ພຣະອົງຜູ້ນິຣະທຸກ ຂ້າພຣະອົງທູນຖາມແລ້ວ
ຂໍພຣະອົງຜູ້ມີປັນຍາ ໂຜດຕັດບອກການດຳເນີນຊີວິດ
ຂອງພຣະອະຣະຫັນຕະຂີນາສົບ ແລະພຣະເສຂະເຫຼົ່ານັ້ນເທີ້ນ

[໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ພິກຂຸບໍ່ເພິ່ງປາຖະໜາຍິ່ງໃນກາມທັງຫຼາຍ
ເພິ່ງເປັນຜູ້ມີໃຈບໍ່ຂຸ່ນມົວ ສະຫຼາດໃນທຳທັງປວງ
ມີສະຕິດຳຣົງຢູ່ (໗)

## ວ່າດ້ວຍກາມ ໒

ຄຳວ່າ ພິກຂຸບໍ່ເພິ່ງປາຖະໜາຍິ່ງໃນກາມທັງຫຼາຍ ອະທິບາຍວ່າ

ຄຳວ່າ ກາມ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ

ວັດຖຸກາມ ຄືອັນໃດ?

ຄື ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ທີ່ໜ້າພໍໃຈ ເຄື່ອງປູລາດ ເຄື່ອງນຸ່ງຫົ່ມ ທາດຍິງຊາຍ ແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ລາ ທີ່ນາ ທີ່ສວນ ເງິນ ຄຳ ໝູ່ບ້ານ ນິຄົມ ຣາດຊະທານີ ແຄວ້ນ ຊົນນະບົດ ກອງພົນຮົບ[១] ຄັງຫຼວງ ແລະວັດຖຸທີ່ໜ້າຍິນດີແນວໃດແນວໜຶ່ງ (ເຫຼົ່ານີ້) ຊື່ວ່າວັດຖຸກາມ

ອີກໄນໜຶ່ງ ກາມທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ກາມທີ່ເປັນພາຍໃນ ທີ່ເປັນພາຍນອກ ທີ່ເປັນທັງພາຍໃນ ແລະພາຍນອກ ກາມຢ່າງຫຍາບ ຢ່າງກາງ ຢ່າງປະນີດ ກາມທີ່ເປັນຂອງສັດໃນອະບາຍ ທີ່ເປັນຂອງມະນຸດ ທີ່ເປັນຂອງທິບ ກາມທີ່ຜາກົດສະເພາະໜ້າ ທີ່ເນຣະມິດຂຶ້ນເອງ ທີ່ບໍ່ໄດ້ເນຣະມິດຂຶ້ນເອງ ທີ່ຜູ້ອື່ນເນຣະມິດໃຫ້ ກາມທີ່ມີຜູ້ຄອບຄອງ ທີ່ບໍ່ມີຜູ້ຄອບຄອງ ທີ່ຍຶດຖືວ່າເປັນຂອງເຮົາ ທີ່ບໍ່ຍຶດຖືວ່າເປັນຂອງເຮົາ ສະພາວະທຳທີ່ເປັນກາມາວະຈອນ ທີ່ເປັນຣູປາວະຈອນ ທີ່ເປັນອະຣູປາວະຈອນແມ່ນທັງປວງ ກາມທີ່ເປັນເຫດເກີດແຫ່ງຕັນຫາ ເປັນອາລົມແຫ່ງຕັນຫາ ທີ່ຊື່ວ່າກາມ ຍ້ອນມີຄວາມໝາຍວ່າ ໜ້າປາຖະໜາ ໜ້າຍິນດີ ໜ້າລຸ້ມຫຼົງ ໜ້າຮື່ນຣົມ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ກິເລດກາມ ຄືອັນໃດ

ຄື ຄວາມພໍໃຈ ຄວາມກຳໜັດ ຄວາມກຳໜັດດ້ວຍອຳນາດຄວາມພໍໃຈ ຄວາມດຳຣິ ຄວາມກຳໜັດ ຄວາມກຳໜັດດ້ວຍອຳນາດຄວາມດຳຣິ ຊື່ວ່າກາມ ໄດ້ແກ່ ຄວາມພໍໃຈດ້ວຍອຳນາດຄວາມຕ້ອງການ ຄວາມກຳໜັດດ້ວຍອຳນາດຄວາມຕ້ອງການ ຄວາມເພີດເພີນດ້ວຍອຳນາດຄວາມຕ້ອງການ ຄວາມທະຍານຢາກດ້ວຍອຳນາດຄວາມຕ້ອງການ ຄວາມເຍື່ອໃຍດ້ວຍອຳນາດຄວາມຕ້ອງການ ຄວາມກະຫາຍດ້ວຍອຳນາດຄວາມຕ້ອງການ ຄວາມຮ້ອນຮົນດ້ວຍອຳນາດຄວາມຕ້ອງການ ຄວາມຍິນດີດ້ວຍອຳນາດຄວາມຕ້ອງການ ຄວາມສະຍົບດ້ວຍອຳນາດຄວາມຕ້ອງການ ຄວາມຕິດໃຈດ້ວຍອຳນາດຄວາມຕ້ອງການ ຫ້ວງນ້ຳຄືຄວາມຕ້ອງການ ກິເລດເຄື່ອງປະກອບຄືຄວາມຕ້ອງການ ກິເລດເຄື່ອງຍຶດໝັ້ນຄືຄວາມຕ້ອງການ ກິເລດເຄື່ອງກັ້ນຈິດຄືຄວາມພໍໃຈດ້ວຍອຳນາດຄວາມຕ້ອງການໃນກາມທັງຫຼາຍ

(ສົມຈິງດັ່ງທີ່ພຣະເຈົ້າອັດທະມາສົກເປ່ງອຸທານວ່າ)

ເຈົ້າກາມເອີຍ ເຮົາເຫັນຮາກເຫງົ້າຂອງເຈົ້າແລ້ວ
ເຈົ້າເກີດຍ້ອນຄວາມດຳຣິ ເຮົາຈັກບໍ່ດຳຣິເຖິງເຈົ້າອີກ
ເຈົ້າຈັກບໍ່ເກີດມາເປັນແນວນີ້ໄດ້ອີກແລ້ວເຈົ້າກາມເອີຍ

ເຫຼົ່ານີ້ ຮຽກວ່າ ກິເລດກາມ

ຕັນຫາ ຕັດຮຽກວ່າ ຄວາມຕິດໃຈ ຄື ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຄຳວ່າ ບໍ່ເພິ່ງປາຖະໜາຍິ່ງໃນກາມທັງຫຼາຍ ອະທິບາຍວ່າ ບໍ່ເພິ່ງປາຖະໜາຍິ່ງ ໆ ຂຶ້ນໄປ ຄື ບໍ່ເພິ່ງພົວພັນໃນວັດຖຸກາມ ເປັນຜູ້ບໍ່ຍິນດີ ບໍ່ຕິດໃຈ ບໍ່ສະຍົບ ບໍ່ມົກມຸ່ນ

ຄື ເປັນຜູ້ຄາຍຄວາມຍິນດີແລ້ວ ປາສະຈາກຄວາມຍິນດີແລ້ວ ສະລະຄວາມຍິນດີແລ້ວ ຄາຍຄວາມຍິນດີແລ້ວ ປ່ອຍຄວາມຍິນດີແລ້ວ ລະຄວາມຍິນດີແລ້ວ ເປັນຜູ້ສະລັດຖິ້ມຄວາມຍິນດີແລ້ວ ຄື ເປັນຜູ້ຄາຍຣາຄະແລ້ວ ປາສະຈາກຣາຄະແລ້ວ ສະລະຣາຄະແລ້ວ ຄາຍຣາຄະແລ້ວ

ປ່ອຍຣາຄະແລ້ວ ລະຣາຄະແລ້ວ ສະລັດຖິ້ມຣາຄະແລ້ວ ເປັນຜູ້ໝົດຄວາມຢາກແລ້ວ ດັບແລ້ວ ເຢັນແລ້ວ ມີຕົນອັນປະເສີດສະເຫວີຍສຸກຢູ່ ລວມຄວາມວ່າ ບໍ່ເພິ່ງປາຖະໜາຍິ່ງໃນກາມທັງຫຼາຍ

ຄຳວ່າ ເພິ່ງເປັນຜູ້ມີໃຈບໍ່ຂຸ່ນມົວ ອະທິບາຍ ວ່າ

ຄຳວ່າ ໃຈ ໄດ້ແກ່ ຈິດ ມະໂນ ມານັດ ຫົວໃຈ ປັນທະຣະ ມະນະ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ມະໂນວິນຍານທາດທີ່ເກີດຈາກຜັດສະເປັນຕົ້ນນັ້ນ ຈິດຍ່ອມຂຸ່ນມົວ ຄື ເສົ້າໝອງ ຍຸ້ງຍາກ ວຸ່ນວາຍ ຫວັ່ນໄຫວ ໝຸນວົນ ບໍ່ສະງົບດ້ວຍກາຍທຸດຈະຣິດ ຯລຯ ຈິດຂຸ່ນມົວ ເສົ້າໝອງ ຍຸ້ງຍາກ ວຸ່ນວາຍ ຫວັ່ນໄຫວ ໝຸນວົນ ບໍ່ສະງົບດ້ວຍວະຈີທຸດຈະຣິດ ຯລຯ ມະໂນທຸດຈະຣິດ ຯລຯ ຣາຄະ (ຄວາມກຳໜັດ) ຯລຯ ໂທສະ (ຄວາມຂັດເຄືອງ) ຯລຯ ໂມຫະ (ຄວາມລຸ້ມຫຼົງ) ຯລຯ ໂກທະ (ຄວາມໂກດ) ຯລຯ ອຸປະນາຫະ (ຄວາມຜູກໂກດ) ຯລຯ ມັກຂະ (ຄວາມລົບຫຼູ່ຄຸນທ່ານ) ຯລຯ ປະລາສະ (ຄວາມຕີສະເໝີ) ຯລຯ ອິດສາ (ຄວາມຣິດສະຫຍາ) ຯລຯ ມັດສະຣິຍະ (ຄວາມຂີ້ຖີ່) ຯລຯ ມາຍາ (ຄວາມຫຼອກລວງ) ຯລຯ ສາເຖີຍຍະ (ຄວາມໂອ້ອວດ) ຯລຯ ຖຳພະ (ຄວາມຫົວດື້) ຯລຯ ສາຣຳພະ (ຄວາມແຂ່ງດີ) ຯລຯ ມານະ (ຄວາມຖືຕົວ) ຯລຯ ອະຕິມານະ (ຄວາມດູໝິ່ນ ) ຯລຯ ມະທະ (ຄວາມມົວເມົາ) ຯລຯ ປະມາທະ (ຄວາມຜະໝາດ) ຯລຯ ກິເລດທຸກຊະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ຯລຯ ອະກຸສະລາພິສັງຂານທຸກປະເພດ

ຄຳວ່າ ເພິ່ງເປັນຜູ້ມີໃຈບໍ່ຂຸ່ນມົວ ອະທິບາຍວ່າ ເພິ່ງເປັນຜູ້ມີຈິດບໍ່ຂຸ່ນມົວ ຄື ບໍ່ເສົ້າໝອງ ບໍ່ຫຍຸ້ງຍາກ ບໍ່ວຸ່ນວາຍ ບໍ່ຫວັ່ນໄຫວ ບໍ່ໝຸນວົນ ສະງົບ ໄດ້ແກ່ ເພິ່ງລະ ຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງກິເລດທີ່ກໍ່ຄວາມຂຸ່ນມົວ ຄື ເພິ່ງເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ເອົາອອກ ສະລັດອອກ ສະງົບ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບກິເລດທີ່ກໍ່ຄວາມຂຸ່ນມົວ ມີໃຈເປັນອິດສະຫຼະ (ຈາກຄວາມຂຸ່ນມົວ) ຢູ່ ລວມຄວາມວ່າ ເພິ່ງເປັນຜູ້ມີໃຈບໍ່ຂຸ່ນມົວ

ຄຳວ່າ ສະຫຼາດໃນທຳທັງປວງ ອະທິບາຍວ່າ ເປັນຜູ້ສະຫຼາດໃນທຳທັງປວງວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ທຳທັງປວງເປັນອະນັດຕາ ຯລຯ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຯລຯ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ຊື່ວ່າສະຫຼາດໃນທຳທັງປວງ ແນວນີ້ແດ່

ອີກໄນໜຶ່ງ ເປັນຜູ້ສະຫຼາດໃນທຳທັງປວງ ໂດຍຄວາມເປັນຂອງບໍ່ທ່ຽງ ຯລຯ ເປັນທຸກ ຯລຯ ເປັນໂຣກ ຯລຯ ເປັນດັ່ງຫົວຝີ ຯລຯ. ເປັນດັ່ງລູກສອນ ຯລຯ ເປັນຂອງລຳບາກ ຯລຯ. ເປັນອາພາດ ຯລຯ ເປັນຢ່າງອື່ນ (ບັງຄັບບໍ່ໄດ້) ຯລຯ ເປັນຂອງຊຸດໂຊມ ຯລຯ ເປັນສະໜຽດ ຯລຯ ເປັນອຸປັດທະວະຯລຯ ເປັນຂອງບໍ່ໜ້າຍິນດີຯລຯ ເປັນໄພ ຯລຯ ເປັນອຸປະສັກ ຯລຯ ເປັນຂອງບໍ່ໜ້າພໍໃຈ ຯລຯ ເປັນຂອງຫວັ່ນໄຫວ ຯລຯ ເປັນຂອງຜຸພັງ ຯລຯເປັນຂອງບໍ່ຍັ່ງຍືນ

ຯລຯ ເປັນຂອງບໍ່ມີບ່ອນຕ້ານທານ ຯລຯ ເປັນຂອງບໍ່ມີຫຼີບຫຼີກ ຯລຯ ເປັນຂອງບໍ່ມີບ່ອນເພິ່ງ ຯລຯ ເປັນຂອງບໍ່ມີບ່ອນອາໄສ ຯລຯ ເປັນຂອງວ່າງ ຯລຯ ເປັນຂອງເປົ່າ ຯລຯ ເປັນຂອງສູນ ຯລຯ ເປັນອະນັດຕາ ຯລຯ ເປັນຂອງມີໂທດ ຯລຯ ເປັນຂອງຜັນປ່ຽນໄປເປັນທຳມະດາ ຯລຯ ເປັນຂອງບໍ່ມີແກ່ນສານ ຯລຯ ເປັນເຫດແຫ່ງຄວາມລຳບາກ ຯລຯ ເປັນດັ່ງເພດຊະຄາດ ຯລຯ ເປັນຂອງປາສະຈາກຄວາມຈະເລີນ ຯລຯ ເປັນຂອງມີອາສະວະ ຯລຯ ເປັນຂອງທີ່ຖືກເຫດປັດໄຈປຸງແຕ່ງ ຯລຯ ເປັນເຫຍື່ອແຫ່ງມານ ຯລຯ ມີຊາດເປັນທຳມະດາ ຯລຯ ມີຊະຣາເປັນທຳມະດາ ຯລຯ ມີພະຍາທິເປັນທຳມະດາ ຯລຯ ມີມໍຣະນະເປັນທຳມະດາ ຯລຯ ມີໂສກະ (ຄວາມເສົ້າໂສກ) ປະຣິເທວະ (ຄວາມຄໍ່າຄວນ) ທຸກຂະ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ອຸປາຍາດ (ຄວາມຄັບແຄ້ນໃຈ) ເປັນທຳມະດາ ຯລຯ ມີຄວາມເສົ້າໝອງເປັນທຳມະດາ ຯລຯ ເປັນເຫດເກີດທຸກ ຯລຯ ຕັ້ງຢູ່ບໍ່ໄດ້ ຯລຯ ຫາຄວາມແຊ່ມຊື່ນບໍ່ໄດ້ ຯລຯ ເປັນໂທດ ຯລຯ ເປັນຂອງທີ່ຕ້ອງສະລັດອອກໄປ ຊື່ວ່າສະຫຼາດໃນທຳທັງປວງ ແນວນີ້ແດ່

ອີກໄນໜຶ່ງ ເປັນຜູ້ສະຫຼາດໃນຂັນ ສະຫຼາດໃນທາດ ສະຫຼາດໃນອາຍະຕະນະ ສະຫຼາດໃນປະຕິດຈະສະມຸບບາດ ສະຫຼາດໃນສະຕິປັດຖານ ສະຫຼາດໃນສຳມັບປະທານ ສະຫຼາດໃນອິດທິບາດ ສະຫຼາດໃນອິນຊີ ສະຫຼາດໃນພະລະ ສະຫຼາດໃນໂພດຊົງ ສະຫຼາດໃນມັກ ສະຫຼາດໃນຜົນ ສະຫຼາດໃນນິບພານ ຊື່ວ່າສະຫຼາດໃນທຳທັງປວງ ແນວນີ້ແດ່

ອີກໄນໜຶ່ງ ອາຍະຕະນະ ໑໘ ຕັດຮຽກວ່າ ທຳທັງປວງ ຄື ຕາແລະຮູບ ຫູແລະສຽງ ດັງແລະກິ່ນ ລີ້ນແລະຣົດ ກາຍແລະໂຜດຖັບພະ ໃຈແລະທຳມາຣົມ ຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນອາຍະຕະນະພາຍໃນ ແລະພາຍນອກ ພິກຂຸລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນອາຍະຕະນະພາຍໃນ ແລະພາຍນອກໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດ້ວຍເຫດໃດ ພິກຂຸຊື່ວ່າເປັນຜູ້ສະຫຼາດໃນທຳທັງປວງ ແມ່ນດ້ວຍເຫດມີປະມານເທົ່ານີ້ ລວມຄວາມວ່າສະຫຼາດໃນທຳທັງປວງ

## ລັກສະນະຜູ້ມີສະຕິ ໔

ຄຳວ່າ ມີສະຕິ ໃນຄຳວ່າ ພິກຂຸ ຯລຯ ມີສະຕິດຳຣົງຢູ່ ອະທິບາຍວ່າ ມີສະຕິດ້ວຍເຫດ ໔ ຢ່າງ ຄື

໑. ຊື່ວ່າ ມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ
໒. ຊື່ວ່າ ມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາເວທະນາໃນເວທະນາທັງຫຼາຍ
໓. ຊື່ວ່າ ມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາຈິດໃນຈິດ
໔. ຊື່ວ່າ ມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາທຳໃນທຳທັງຫຼາຍ

ມີສະຕິດ້ວຍເຫດອີກ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ຍ້ອນເວັ້ນຈາກຄວາມເປັນຜູ້ບໍ່ມີສະຕິ
໒. ຊື່ວ່າມີສະຕິ ຍ້ອນເປັນຜູ້ທຳສິ່ງທັງຫຼາຍທີ່ຄວນເຮັດດ້ວຍສະຕິ
໓. ຊື່ວ່າມີສະຕິ ຍ້ອນເປັນຜູ້ກຳຈັດສິ່ງທັງຫຼາຍທີ່ເປັນຝ່າຍກົງກັນຂ້າມກັບສະຕິ
໔. ຊື່ວ່າມີສະຕິ ຍ້ອນເປັນຜູ້ບໍ່ຫຼົງລືມທຳທັງຫຼາຍທີ່ເປັນມູນເຫດແຫ່ງສະຕິ

ມີສະຕິດ້ວຍເຫດອີກ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ຍ້ອນເປັນຜູ້ພຽບພ້ອມດ້ວຍສະຕິ
໒. ຊື່ວ່າມີສະຕິ ຍ້ອນເປັນຜູ້ຊຳນານໃນສະຕິ
໓. ຊື່ວ່າມີສະຕິ ຍ້ອນເປັນຜູ້ຄ່ອງແຄ່ວໃນສະຕິ
໔. ຊື່ວ່າມີສະຕິ ຍ້ອນເປັນຜູ້ບໍ່ຫວນກັບຈາກສະຕິ

ມີສະຕິດ້ວຍເຫດອີກ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ຍ້ອນມີຢູ່ຕາມປົກກະຕິ
໒. ຊື່ວ່າມີສະຕິ ຍ້ອນເປັນຜູ້ສະງົບ
໓. ຊື່ວ່າມີສະຕິ ຍ້ອນເປັນຜູ້ຣະງັບ
໔. ຊື່ວ່າມີສະຕິ ຍ້ອນເປັນຜູ້ປະກອບດ້ວຍທຳຂອງສັດຕະບຸຣຸດ

(ມີສະຕິດ້ວຍເຫດອີກ ໑໐ ຢ່າງ ຄື)

໑. ຊື່ວ່າມີສະຕິ ຍ້ອນຣະລຶກເຖິງ ພຸດທະຄຸນ
໒. ຊື່ວ່າມີສະຕິ ຍ້ອນຣະລຶກເຖິງ ທຳມະຄຸນ
໓. ຊື່ວ່າມີສະຕິ ຍ້ອນຣະລຶກເຖິງ ສັງຄະຄຸນ
໔. ຊື່ວ່າມີສະຕິ ຍ້ອນຣະລຶກເຖິງ ສີນທີ່ຕົນຮັກສາ
໕. ຊື່ວ່າມີສະຕິ ຍ້ອນຣະລຶກເຖິງ ທານທີ່ຕົນບໍລິຈາກແລ້ວ
໖. ຊື່ວ່າມີສະຕິ ຍ້ອນຣະລຶກເຖິງ ຄຸນທີ່ເຮັດຄົນໃຫ້ເປັນເທວະດາ
໗. ຊື່ວ່າມີສະຕິ ຍ້ອນຕັ້ງສະຕິ ກຳນົດລົມກາຍໃຈເຂົ້າອອກ
໘. ຊື່ວ່າມີສະຕິ ຍ້ອນຣະລຶກເຖິງ ຄວາມຕາຍທີ່ຈະຕ້ອງມີເປັນທຳມະດາ
໙. ຊື່ວ່າມີສະຕິ ຍ້ອນຣະລຶກທົ່ວໄປໃນກາຍ (ໃຫ້ເຫັນວ່າບໍ່ງາມ)
໑໐. ຊື່ວ່າມີສະຕິ ຍ້ອນຣະລຶກເຖິງທຳທີ່ສະງົບຣະງັບ (ກິເລດແລະຄວາມທຸກ) ຄືນິບພານ ສະຕິ ໗ລ໗ ສຳມາສະຕິ ສະຕິສຳໂພດຊົງ ເອກາຍະນະມັກ ຕັດຮຽກວ່າ ສະຕິ ພິກຂຸເປັນ

ຜູ້ປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມແລ້ວດ້ວຍສະຕິນີ້ ພິກຂຸນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ຜູ້ມີສະຕິ

ຄຳວ່າ ພິກຂຸ ອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນທຳລາຍທຳ ໗ ປະການໄດ້ແລ້ວ ຄື

໑. ທຳລາຍສັກກາຍະທິດຖິໄດ້ແລ້ວ
໒. ທຳລາຍວິຈິກິດສາໄດ້ແລ້ວ
໓. ທຳລາຍສີລັບພະຕະປະຣາມາດໄດ້ແລ້ວ
໔. ທຳລາຍຣາຄະໄດ້ແລ້ວ
໕. ທຳລາຍໂທສະໄດ້ແລ້ວ
໖. ທຳລາຍໂມຫະໄດ້ແລ້ວ
໗. ທຳລາຍມານະໄດ້ແລ້ວ

ຄື ພິກຂຸນັ້ນ ທຳລາຍບາບອະກຸສົນທຳເຊິ່ງເປັນເຫດແຫ່ງຄວາມເສົ້າໝອງ ກໍ່ພົບໃໝ່ມີຄວາມກະວົນກະວາຍ ມີທຸກເປັນວິບາກ ເປັນບ່ອນຕັ້ງແຫ່ງຊາດ ຊະຣາ ມໍຣະນະ ຕໍ່ໄປໄດ້ແລ້ວ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ສະພິຍະ)

ຜູ້ໃດຄວນແກ່ຄຳຊົມເຊີຍວ່າເປັນຜູ້ເຖິງນິບພານດ້ວຍທາງທີ່ຕົນເຮັດແລ້ວ
ຂ້າມພົ້ນຄວາມສົງໄສໄດ້ແລ້ວ ລະຄວາມເສື່ອມແລະຄວາມຈະເລີນແລ້ວ
ຢູ່ຈົບພົມມະຈັນ ສິ້ນພົບໃໝ່ແລ້ວ ຜູ້ນັ້ນຊື່ວ່າພິກຂຸ

ຄຳວ່າ ພິກຂຸ ຯລຯ ມີສະຕິດຳຣົງຢູ່ ອະທິບາຍວ່າ ພິກຂຸເພິ່ງມີສະຕິ ດຳຣົງຢູ່ ຄື ເພິ່ງມີສະຕິຍ່າງ ເພິ່ງມີສະຕິຢືນ ເພິ່ງມີສະຕິນັ່ງ ເພິ່ງມີສະຕິນອນ ເພິ່ງມີສະຕິກ້າວໄປຂ້າງໜ້າ ເພິ່ງມີສະຕິຖອຍກັບ ເພິ່ງມີສະຕິແນມເບິ່ງ ເພິ່ງມີສະຕິຫຼຽວເບິ່ງ ເພິ່ງມີສະຕິຄູ້ເຂົ້າ ເພິ່ງມີສະຕິຢຽດອອກ ເພິ່ງມີສະຕິໃຊ້ຜ້າສັງຄາຕິ ບາດ ແລະຈີວອນ ເພິ່ງມີສະຕິທ່ຽວໄປ ຢຸດຢູ່ ເຄື່ອນໄຫວ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ພິກຂຸ ຯລຯ ມີສະຕິດຳຣົງຢູ່ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ພິກຂຸບໍ່ເພິ່ງປາຖະໜາຍິ່ງໃນກາມທັງຫຼາຍ
ເພິ່ງເປັນຜູ້ມີໃຈບໍ່ຂຸ່ນມົວ ສະຫຼາດໃນທຳທັງປວງ
ມີສະຕິດຳຣົງຢູ່

ພ້ອມກັບການຈົບຄາຖາ ທຳມະຈັກຂຸປາສະຈາກທຸລີ ປາສະຈາກມົນທິນວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ໄດ້ເກີດຂຶ້ນ

ແກ່ເຫຼົ່າເທວະດາ ແລະມະນຸດທັງຫຼາຍ ຜູ້ມີສັນທະ ຄວາມພະຍາຍາມ ຄວາມປະສົງ ການອົບຮົມບຸນຍາປາຣະມີຮ່ວມກັນມາກັບພາມ ຈິດຂອງພາມນັ້ນກໍຫຼຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ ໜັງເສືອ ຊະດາ ຜ້າຄາກອງ ໄມ້ການເທົ້າ ເຕົ້ານໍ້າ ຜົມແລະໜວດຂອງອະຊິຕະພາມກໍຫາຍໄປພ້ອມກັບການບັນລຸອະຣະຫັນຕະຜົນ ທ່ານເປັນພິກຂຸ ມີຫົວໂລ້ນ ນຸ່ງຫົ່ມຜ້າກາສະວະ ຊົງສັງຄາຕິ ບາດແລະຈີວອນ ເພື່ອການປະຕິບັດເອື້ອປະໂຫຍດ ຈຶ່ງປະຄອງອັນຊະລີ ນັ່ງລົງນະມັດສະການພຣະຜູ້ມີພຣະພາກເຈົ້າໂດຍປະກາດວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ

**ອະຊິຕະມານະວະປັນຫານິດເທດທີ ໑ ຈົບ**

# ໘. ຕິດສະເມດເຕີຍຍະມານະວະປັນຫານິດເທດ

## ວ່າດ້ວຍປັນຫາຂອງຕິດສະເມດເຕີຍຍະມານົບ

[໗] (ທ່ານຕິດສະເມດເຕີຍຍະທູນຖາມ ດັ່ງນີ້)

ໃຜຊື່ວ່າເປັນຜູ້ສັນໂດດໃນໂລກນີ້
ຄວາມຫວັ່ນໄຫວທັງຫຼາຍຍ່ອມບໍ່ມີແກ່ໃຜ
ໃຜຮູ້ແຈ້ງສ່ວນສຸດທັງ ໒ ດ້ານແລ້ວ
ບໍ່ຍຶດຕິດໃນທ່າມກາງດ້ວຍມັນຕາ
ພຣະອົງຕັດຮຽກໃຜວ່າເປັນມະຫາບຸຣຸດ
ໃຜລ່ວງພົ້ນເຄື່ອງຮ້ອຍຮັດໃນໂລກນີ້ໄດ້ (໑)

ຄໍາວ່າ ໃຜຊື່ວ່າເປັນຜູ້ສັນໂດດໃນໂລກນີ້ ອະທິບາຍວ່າ ໃຜຍິນດີ ສັນໂດດ ຄືພໍໃຈ ມີຄວາມດໍາຣິບໍລິບູນແລ້ວໃນໂລກ ລວມຄວາມວ່າ ໃຜຊື່ວ່າເປັນຜູ້ສັນໂດດໃນໂລກນີ້

ຄໍາວ່າ ດັ່ງນີ້ ໃນຄໍາວ່າ ທ່ານຕິດສະເມດເຕີຍຍະທູນຖາມ ດັ່ງນີ້ ເປັນບົດສົນທິ ເປັນຄໍາເຊື່ອມບົດ ເປັນຄໍາທີ່ເຮັດບົດໃຫ້ບໍລິບູນ ເປັນຄວາມສໍາພັນແຫ່ງອັກສອນ ເປັນຄວາມສະຫຼະສະຫຼວຍແຫ່ງພະຍັນຊະນະ ຄໍາວ່າ ດັ່ງນີ້ ນີ້ ເປັນຄໍາເຊື່ອມບົດໜ້າກັບບົດຫຼັງເຂົ້ານໍາກັນ

ຄໍາວ່າ ທ່ານ ເປັນຄໍາກ່າວດ້ວຍຄວາມຮັກ ເປັນຄໍາກ່າວໂດຍຄວາມເຄົາລົບ ຄໍາວ່າ ທ່ານນີ້ ເປັນຄໍາກ່າວທີ່ມີຄວາມເຄົາລົບ ແລະຄວາມຢໍາເກງ

ຄໍາວ່າ ຕິດສະ ເປັນຊື່ຂອງພາມນັ້ນ ເປັນການກ່າວເຖິງ ການຂະໜານນາມ ການບັນຍັດຊື່ທີ່ຮຽກກັນ ຊື່ ການຕັ້ງຊື່ ຊື່ທີ່ຕັ້ງໃຫ້ ພາສາ ພະຍັນຊະນະ ຊື່ຮຽກສະເພາະ

ຄໍາວ່າ ເມດເຕີຍຍະ ເປັນໂຄດ ເປັນການກ່າວເຖິງ ການຂະໜານນາມ ການບັນຍັດ ຊື່ທີ່ຮຽກກັນສໍາລັບພາມນັ້ນ ລວມຄວາມວ່າ ທ່ານຕິດສະເມດເຕີຍຍະທູນຖາມ ດັ່ງນີ້

ຄໍາວ່າ ຄວາມຫວັ່ນໄຫວທັງຫຼາຍຍ່ອມບໍ່ມີແກ່ໃຜ ອະທິບາຍວ່າ ຄວາມຫວັ່ນໄຫວຍ້ອນຕັນຫາ ຄວາມຫວັ່ນໄຫວຍ້ອນທິດຖິ ຄວາມຫວັ່ນໄຫວຍ້ອນມານະ ຄວາມຫວັ່ນໄຫວ ຍ້ອນກິເລດ ຄວາມຫວັ່ນໄຫວຍ້ອນການ ບໍ່ມີ ຄື ບໍ່ມີຢູ່ ບໍ່ປາກົດ ຫາບໍ່ໄດ້ແກ່ໃຜ ຄວາມຫວັ່ນໄຫວທັງຫຼາຍໃຜລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ຄວາມຫວັ່ນໄຫວທັງຫຼາຍຍ່ອມບໍ່ມີແກ່ໃຜ

ຄໍາວ່າ ໃຜຮູ້ແຈ້ງສ່ວນສຸດທັງ ໒ ດ້ານແລ້ວ ໄດ້ແກ່ ໃຜຮູ້ແຈ້ງ ຄື ຮູ້ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງເຊິ່ງບ່ອນສຸດທັງ ໒ ດ້ານແລ້ວ ລວມຄວາມວ່າ ໃຜຮູ້ແຈ້ງສ່ວນສຸດທັງ ໒ ດ້ານແລ້ວ

ຄໍາວ່າ ບໍ່ຢຶດຕິດໃນທ່າມກາງດ້ວຍມັນຕາ ອະທິບາຍວ່າ ຍ່ອມບໍ່ຢຶດຕິດ ຄື ບໍ່ຕິດແລ້ວ ບໍ່ເຂົ້າໄປຕິດແລ້ວ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງແລ້ວ ໃນທ່າມກາງດ້ວຍປັນຍາ ມີໃຈເປັນອິດສະຫຼະ (ຈາກກິເລດ)ຢູ່ ລວມຄວາມວ່າ ບໍ່ຢຶດຕິດໃນທ່າມກາງດ້ວຍມັນຕາ

ຄໍາວ່າ ພຣະອົງຕັດຮຽກໃຜວ່າເປັນມະຫາບຸຣຸດ ອະທິບາຍວ່າ ພຣະອົງຕັດຮຽກໃຜ ຄືຕັດເຖິງໃຜ ເຂົ້າພຣະທະໄທໃຜ ຊົງກ່າວເຖິງໃຜ ເຫັນໃຜ ຖະແຫຼງຮອດໃຜວ່າເປັນມະຫາບຸຣຸດ ຄື ບຸຣຸດຜູ້ເລີດ ບຸຣຸດຜູ້ປະເສີດ ບຸຣຸດຜູ້ວິເສດ ບຸຣຸດຜູ້ເປັນຫົວໜ້າ ບຸຣຸດຜູ້ສູງສຸດ ບຸຣຸດຜູ້ເປັນປະທານ ບຸຣຸດຜູ້ປະເສີດ ລວມຄວາມວ່າ ພຣະອົງຕັດຮຽກໃຜວ່າເປັນມະຫາບຸຣຸດ

ຄໍາວ່າ ໃຜລ່ວງພົ້ນເຄື່ອງຮ້ອຍຮັດໃນໂລກນີ້ໄດ້ ອະທິບາຍວ່າ ຕ້ອງການລ່ວງພົ້ນ ຄືລ່ວງ ກ້າວລ່ວງ ກ້າວພົ້ນ ລ່ວງເລີຍເຄື່ອງຮ້ອຍຮັດໃນໂລກນີ້ໄດ້ ລວມຄວາມວ່າ ໃຜລ່ວງພົ້ນເຄື່ອງຮ້ອຍຮັດໃນໂລກນີ້ໄດ້ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

(ທ່ານຕິດສະເມດເຕີຍຍະທູນຖາມ ດັ່ງນີ້)

ໃຜຊື່ວ່າເປັນຜູ້ສັນໂດດໃນໂລກນີ້
ຄວາມຫວັ່ນໄຫວທັງຫຼາຍຍ່ອມບໍ່ມີແກ່ໃຜ
ໃຜຮູ້ແຈ້ງສ່ວນສຸດທັງ ໒ ດ້ານແລ້ວ
ບໍ່ຢຶດຕິດໃນທ່າມກາງດ້ວຍມັນຕາ
ພຣະອົງຕັດຮຽກໃຜວ່າເປັນມະຫາບຸຣຸດ
ໃຜລ່ວງພົ້ນເຄື່ອງຮ້ອຍຮັດໃນໂລກນີ້ໄດ້

[໑໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດເຕີຍຍະ)

ພິກຂຸເປັນຜູ້ມີພົມມະຈັນ (ຍ້ອນເຫັນໂທດ) ໃນການທັງຫຼາຍ

ຊື່ວ່າເປັນຜູ້ສັນໂດດ ຜູ້ຄາຍຕັນຫາແລ້ວ
ມີສະຕິທຸກເມື່ອ ຮູ້ທຳທັງຫຼາຍແລ້ວດັບກິເລດໄດ້
ພິກຂຸນັ້ນຊື່ວ່າບໍ່ມີຄວາມຫວັ່ນໄຫວ (໒)

ຄຳວ່າ ພິກຂຸເປັນຜູ້ມີພົນມະຈັນ (ຍ້ອນເຫັນໂທດ) ໃນກາມທັງຫຼາຍ ອະທິບາຍວ່າ

ຄຳວ່າ ກາມ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ຯລຯ ເຫຼົ່ານີ້ຮຽກວ່າ ກິເລດກາມ

ວ່າດ້ວຍອະຣິຍະມັກມີອົງ ໘ ຮຽກວ່າພົມມະຈັນ

ຄຳວ່າ ເປັນຜູ້ມີພົມມະຈັນ ອະທິບາຍວ່າ ການງົດ ງົດເວັ້ນ ເວັ້ນຂາດ ເຈຕະນາງົດເວັ້ນ ກິຣິຍາທີ່ບໍ່ເຮັດ ການບໍ່ເຮັດ ການບໍ່ລະເມີດ ການບໍ່ກ້າວລ່ວງແດນແຫ່ງການເຂົ້າເຖິງອະສັດທຳ ຕັດຮຽກວ່າ ພົມມະຈັນ

ອີກໄນໜຶ່ງ ກ່າວໂດຍກົງ ອະຣິຍະມັກມີອົງ ໘ ຄື

໑. ສຳມາທິດຖິ (ເຫັນຊອບ)
໒. ສຳມາສັງກັບປະ (ດຳຣິຊອບ)
໓. ສຳມາວາຈາ (ເຈຣະຈາຊອບ)
໔. ສຳມາກຳມັນຕະ (ກະທຳຊອບ)
໕. ສຳມາອາຊີວະ (ລ້ຽງຊີບຊອບ)
໖. ສຳມາວາຍາມະ (ພະຍາຍາມຊອບ)
໗. ສຳມາສະຕິ (ຣະລຶກຊອບ)
໘. ສຳມາສະມາທິ (ຕັ້ງຈິດໝັ້ນຊອບ) ຕັດຮຽກວ່າ ພົມມະຈັນ

ພິກຂຸໃດ ເປັນຜູ້ປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມແລ້ວດ້ວຍອະຣິຍະມັກມີອົງ ໘ ນີ້ ພິກຂຸນັ້ນ ຕັດຮຽກວ່າ ຜູ້ມີພົມມະຈັນ

ບຸກຄົນຜູ້ພຽບພ້ອມດ້ວຍຊັບຮຽກວ່າ ຜູ້ມີຊັບ ບຸກຄົນຜູ້ພຽບພ້ອມດ້ວຍໂພຄະຮຽກວ່າ ຜູ້ມີໂພຄະ ບຸກຄົນຜູ້ພຽບພ້ອມດ້ວຍຍົດຮຽກວ່າ ຜູ້ມີຍົດ ບຸກຄົນຜູ້ພຽບພ້ອມດ້ວຍສິລະປະ ຮຽກວ່າ ຜູ້ມີສິລະປະ ບຸກຄົນຜູ້ພຽບພ້ອມດ້ວຍສິນຮຽກວ່າ ຜູ້ມີສິນ ບຸກຄົນຜູ້ພຽບພ້ອມດ້ວຍຄວາມພຽນຮຽກວ່າ ຜູ້ມີຄວາມພຽນ ບຸກຄົນຜູ້ພຽບພ້ອມດ້ວຍປັນຍາຮຽກວ່າ ຜູ້ມີປັນຍາ ບຸກຄົນຜູ້ພຽບພ້ອມດ້ວຍວິດຊາຮຽກວ່າ ຜູ້ມີວິດຊາ ສັນໃດ ພິກຂຸໃດ ເປັນຜູ້ປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມແລ້ວດ້ວຍອະຣິຍະມັກມີອົງ ໘ ນີ້ ພິກຂຸນັ້ນ ຕັດຮຽກວ່າ ເປັນຜູ້ມີພົມມະຈັນ ສັນນັ້ນຄືກັນ ລວມຄວາມວ່າ ເປັນຜູ້ມີພົມມະຈັນ (ຍ້ອນເຫັນໂທດ) ໃນກາມທັງຫຼາຍ

ຄຳວ່າ ເມດເຕີຍຍະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍໂຄດ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ฯລฯ ເປັນສັດສິກາ ບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດເຕີຍຍະ

ຄຳວ່າ ຕັນຫາ ໃນຄຳວ່າ ຜູ້ຄາຍຕັນຫາແລ້ວ ມີສະຕິທຸກເມື່ອ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ ຕັນຫານັ້ນຜູ້ໃດ ລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນ ຕັດຮຽກວ່າ ຜູ້ຄາຍຕັນຫາແລ້ວ ຄື ຜູ້ສະລະຕັນຫາແລ້ວ ຄາຍ ຕັນຫາແລ້ວ ປ່ອຍຕັນຫາແລ້ວ ລະຕັນຫາແລ້ວ ສະລັດຖິ້ມຕັນຫາແລ້ວ ໄດ້ແກ່ ຄາຍຮາຄະແລ້ວ ສະລະຮາຄະແລ້ວ ຄາຍຮາຄະແລ້ວ ປ່ອຍຮາຄະແລ້ວ ລະຮາຄະແລ້ວ ສະລັດຖິ້ມຮາຄະແລ້ວ ຄື ເປັນຜູ້ໝົດຄວາມຢາກແລ້ວ ດັບແລ້ວ ເຢັນແລ້ວ ມີຕົນອັນປະເສີດສະເຫວີຍສຸກຢູ່

ຄຳວ່າ ທຸກເມື່ອ ອະທິບາຍວ່າ ທຸກເມື່ອ ຄື ໃນການທັງປວງ ຕະຫຼອດການທັງປວງ ຕະຫຼອດການເປັນນິດ ຕະຫຼອດການຍັ່ງຍືນ ຕະຫຼອດການຕໍ່ເນື່ອງກັນ ຕະຫຼອດການສືບເນື່ອງ ກັນ ຕະຫຼອດການຕິດຕໍ່ກັນ ຕະຫຼອດການເປັນລຳດັບ ຕະຫຼອດການຕິດຕໍ່ກັນເໝືອນຣະລອກຄື້ນ ຕະຫຼອດການເປັນໄປຕໍ່ເນື່ອງບໍ່ຂາດສາຍ ຕະຫຼອດການສືບຕໍ່ກັນກະຊັ້ນຊິດ ຕະຫຼອດການກ່ອນ ພັດ ຫຼັງພັດ ຕະຫຼອດປະຖົມຍາມ ມັດຊິມະຍາມ ປັດສິມຍາມ ຕະຫຼອດຂ້າງແຮມ ຂ້າງຂຶ້ນ ຕະຫຼອດລະດູຝົນ ລະດູໜາວ ລະດູຮ້ອນ ຕະຫຼອດປະຖົມໄວ ມັດຊິມະໄວ ປັດສິມໄວ

ຄຳວ່າ ມີສະຕິ ອະທິບາຍວ່າ ມີສະຕິ ດ້ວຍເຫດ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ
໒. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາເວທະນາໃນເວທະນາທັງຫຼາຍ
໓. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາຈິດໃນຈິດ
໔. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາທຳໃນທຳທັງຫຼາຍ ฯລฯ

ພິກຂຸນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ມີສະຕິ ລວມຄວາມວ່າ ຜູ້ຄາຍຕັນຫາແລ້ວ ມີສະຕິທຸກເມື່ອ

ຄຳວ່າ ພິກຂຸ ฯລฯ ຮູ້ທຳທັງຫຼາຍແລ້ວດັບກິເລດໄດ້ ອະທິບາຍວ່າ ຍານ ທ່ານຮຽກວ່າ ສັງຂາ (ເຄື່ອງພິຈາລະນາ) ໄດ້ແກ່ ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ฯລฯ ຄວາມບໍ່ຫຼົງ ງົມງາຍ ຄວາມເລືອກເຟັ້ນທຳ ສຳມາທິດຖິ

ຄຳວ່າ ຮູ້ ฯລฯ ແລ້ວ ອະທິບາຍວ່າ ຮູ້ແລ້ວ ຄືຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ຊັດແຈ້ງແລ້ວວ່າ ສັງຂານທັງປວງບໍ່ທ່ຽງ

ຮູ້ແລ້ວ ຄື ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ແຈ່ມແຈ້ງແລ້ວວ່າ ສັງຂານທັງປວງເປັນທຸກ ฯລฯ ທຳທັງປວງເປັນອະນັດຕາ ฯລฯ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ฯລฯ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ອີກໄນໜຶ່ງ ຮູ້ແລ້ວ ຄືຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວເຮັດໃຫ້ຊັດແຈ້ງແລ້ວ ໂດຍຄວາມເປັນຂອງບໍ່ທ່ຽງ ฯລฯ ເປັນທຸກ ฯລฯ ເປັນໂຣກ ฯລฯ ເປັນເໝືອນຫົວຝີ ฯລฯ ເປັນເໝືອນລູກສອນ ฯລฯ ເປັນຂອງທີ່ຕ້ອງສະລັດອອກໄປ

ຄຳວ່າ ດັບກິເລດໄດ້ ອະທິບາຍວ່າ ຊື່ວ່າດັບກິເລດໄດ້ ຍ້ອນເຮັດຣາຄະໃຫ້ດັບໄປ ຊື່ວ່າດັບກິເລດໄດ້ ຍ້ອນເຮັດໂທສະໃຫ້ດັບໄປ ຊື່ວ່າດັບກິເລດໄດ້ ຍ້ອນເຮັດໂມຫະໃຫ້ດັບໄປ ຊື່ວ່າດັບກິເລດໄດ້ ຍ້ອນເຮັດໂກທະ ฯລฯ ອຸປະນາຫະ ฯລฯ ມັກຂະ ฯລฯ ປະລາສະ ฯລฯ ອິດສາ ฯລฯ ມັດສະຣິຍະ ฯລฯ ມາຍາ ฯລฯ ສາເຖີຍຍະ ฯລฯ ຖຳພະ ฯລฯ ສາຣຳພະ ฯລฯ ມານະ ฯລฯ ອະຕິມານະ ฯລฯ ມະທະ ฯລฯ ປະມາທະ ฯລฯ ກິເລດທຸກຊະນິດ ฯລฯ ທຸດຈະຣິດທຸກທາງ ฯລฯ ຄວາມກະວົນກະວາຍທຸກຢ່າງ ฯລฯ ຄວາມຮ້ອນຮົນທຸກສະຖານ ຄວາມເດືອດຮ້ອນທຸກປະການ ອະກຸສະລາພິສັງຂານທຸກປະເພດໃຫ້ດັບໄປ

ຄຳວ່າ ພິກຂຸ ອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນທຳລາຍທຳ ໗ ປະການໄດ້ແລ້ວ ฯລฯ ຢູ່ຈົບພົມມະຈັນ ສິ້ນພົບໃໝ່ແລ້ວ ຜູ້ນັ້ນຊື່ວ່າພິກຂຸ ລວມຄວາມວ່າ ພິກຂຸ ฯລฯ ຮູ້ທຳທັງຫຼາຍແລ້ວດັບກິເລດໄດ້

ຄຳວ່າ ພິກຂຸນັ້ນ ໃນຄຳວ່າ ພິກຂຸນັ້ນ ຊື່ວ່າບໍ່ມີຄວາມຫວັ່ນໄຫວ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ຄວາມຫວັ່ນໄຫວ ອະທິບາຍວ່າ ຄວາມຫວັ່ນໄຫວຍ້ອນຕັນຫາ ຄວາມຫວັ່ນໄຫວຍ້ອນທິດຖິ ຄວາມຫວັ່ນໄຫວຍ້ອນມານະ ຄວາມຫວັ່ນໄຫວຍ້ອນກິເລດ ຄວາມຫວັ່ນໄຫວຍ້ອນການ ຄວາມຫວັ່ນໄຫວເຫຼົ່ານັ້ນບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ແກ່ພິກຂຸນັ້ນ ຄວາມຫວັ່ນໄຫວທັງຫຼາຍ ພິກຂຸນັ້ນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ພິກຂຸນັ້ນ ຊື່ວ່າບໍ່ມີຄວາມຫວັ່ນໄຫວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດເຕີຍຍະ)

ພິກຂຸເປັນຜູ້ມີພົມມະຈັນ (ຍ້ອນເຫັນໂທດ) ໃນການທັງຫຼາຍ
ຊື່ວ່າເປັນຜູ້ສັນໂດດ ຜູ້ຄາຍຕັນຫາແລ້ວ
ມີສະຕິທຸກເມື່ອ ຮູ້ທຳທັງຫຼາຍແລ້ວດັບກິເລດໄດ້
ພິກຂຸນັ້ນຊື່ວ່າບໍ່ມີຄວາມຫວັ່ນໄຫວ

[໑໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບອີກວ່າ)

ພິກຂຸນັ້ນຊື່ວ່າຮູ້ແຈ້ງສ່ວນສຸດທັງ ໒ ດ້ານແລ້ວ
ບໍ່ຢຶດຕິດໃນທ່າມກາງດ້ວຍມັນຕາ
ເຮົາຮຽກພິກຂຸນັ້ນວ່າເປັນມະຫາບຸຣຸດ
ພິກຂຸນັ້ນຊື່ວ່າລ່ວງພົ້ນເຄື່ອງຮ້ອຍຮັດໃນໂລກນີ້ໄດ້ (໓)

ຄໍາວ່າ ພິກຂຸນັ້ນຊື່ວ່າຮູ້ແຈ້ງສ່ວນສຸດທັງ ໒ ດ້ານແລ້ວ ບໍ່ຢຶດຕິດໃນທ່າມກາງ ດ້ວຍມັນຕາ ອະທິບາຍ ວ່າ

ຄໍາວ່າ ສ່ວນສຸດ ໄດ້ແກ່ ຜັດສະເປັນສ່ວນສຸດດ້ານໜຶ່ງ ຜັດສະສະມຸໄທເປັນສ່ວນສຸດອີກດ້ານໜຶ່ງ ຜັດສະນິໂຣດຢູ່ທ່າມກາງ ອະດີດເປັນສ່ວນສຸດດ້ານໜຶ່ງ ອະນາຄົດເປັນສ່ວນສຸດອີກດ້ານໜຶ່ງ ປັດຈຸບັນຢູ່ທ່າມກາງ ສຸກເວທະນາເປັນສ່ວນສຸດດ້ານໜຶ່ງ ທຸກຂະເວທະນາເປັນສ່ວນສຸດອີກດ້ານໜຶ່ງ ອະທຸກຂົມສຸກເວທະນາຢູ່ທ່າມກາງ ນາມເປັນສ່ວນສຸດດ້ານໜຶ່ງ ຮູບເປັນສ່ວນສຸດອີກດ້ານໜຶ່ງ ວິນຍານຢູ່ທ່າມກາງ ອາຍະຕະນະພາຍໃນ ໖ ເປັນສ່ວນສຸດດ້ານໜຶ່ງ ອາຍະຕະນະພາຍນອກ ໖ ເປັນສ່ວນສຸດອີກດ້ານໜຶ່ງ ວິນຍານຢູ່ທ່າມກາງ ສັກກາຍະເປັນສ່ວນສຸດດ້ານໜຶ່ງ ສັກກາຍະສະມຸໄທເປັນສ່ວນສຸດອີກດ້ານໜຶ່ງ ສັກກາຍະນິໂຣດຢູ່ທ່າມກາງ

ປັນຍາ ຕັດຮຽກວ່າ ມັນຕາ ໄດ້ແກ່ ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງາຍ ຄວາມເລືອກເຟັ້ນທໍາ ສໍາມາທິດຖິ

## ວ່າດ້ວຍຄວາມຢຶດຕິດ ໒

ຄໍາວ່າ ຄວາມຢຶດຕິດ ໄດ້ແກ່ ຄວາມຢຶດຕິດ ໒ ຢ່າງ ຄື (໑) ຄວາມຢຶດຕິດດ້ວຍອໍານາດຕັນຫາ (໒) ຄວາມຢຶດຕິດດ້ວຍອໍານາດທິດຖິ

ຄວາມຢຶດຕິດດ້ວຍອໍານາດຕັນຫາ ເປັນແນວໃດ?

ຄື ວັດຖຸທີ່ເຮັດໃຫ້ເປັນເຂດ ເປັນແດນ ເປັນສ່ວນ ເປັນຜະແໜກ ກໍານົດຖືເອົາ ຢຶດຖືວ່າເປັນຂອງເຮົາດ້ວຍສ່ວນແຫ່ງຕັນຫາມີປະມານເທົ່າໃດ ຍ່ອມຢຶດຖືວ່າເປັນຂອງເຮົາ ເຊິ່ງວັດຖຸມີປະມານເທົ່ານີ້ວ່າ ນີ້ຂອງເຮົາ ນັ້ນຂອງເຮົາ ເທົ່ານີ້ຂອງເຮົາ ຂອງເຮົາມີປະລິມານເທົ່ານີ້ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ເຄື່ອງປູລາດ ເຄື່ອງນຸ່ງຫົ່ມ ທາດຍິງຊາຍ ແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ລາ ນາ ສວນ ເງິນ ຄໍາ ເຮືອນ ນິຄົມ ຣາດຊະທານີ ແຄວ້ນ ຊົນນະບົດ ກອງພົນຮົບ ຄັງຫຼວງ ແມ່ນມະຫາປະຖະພີທັງໝົດຍ່ອມຢຶດຖືວ່າເປັນຂອງເຮົາ ດ້ວຍອໍານາດຕັນຫາ ເຊິ່ງຈໍາແນກໄດ້ ໑໐໘ ນີ້ຊື່ວ່າຄວາມຢຶດຕິດດ້ວຍອໍານາດຕັນຫາ

ຄວາມຢຶດຕິດດ້ວຍອໍານາດທິດຖິ ເປັນແນວໃດ?

ຄື ສັກກາຍະທິດຖິ ມີວັດຖຸ ໒໐ ມິດສາທິດຖິມີວັດຖຸ ໑໐ ອັນຕະຄາຫິກະທິດຖິມີວັດຖຸ ໑໐ ທິດຖິ ການຕົກຢູ່ໃນທິດຖິ ຄວາມຮົກທຶບຄືທິດຖິ ຄວາມກັນດານຄືທິດຖິ ສັ່ງນໜາມຄືທິດຖິ ຄວາມດີ້ນຮົນຄືທິດຖິ ເຄື່ອງຜູກພັນຄືທິດຖິ ຄວາມຖື ຄວາມຖືໝັ້ນ ຄວາມຍຶດໝັ້ນ ຄວາມຍຶດໝັ້ນຖືໝັ້ນ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິເດຍຣະຖີ ຄວາມຖືຂັດແຍ່ງ ຄວາມຖືວິປະຣິດ ຄວາມຖືວິປະລາດ ຄວາມຖືຜິດ ຄວາມຖືໃນສິ່ງທີ່ບໍ່ເປັນຄວາມຈິງວ່າເປັນຈິງເຫັນປານນີ້ ຈົນເຖິງທິດຖິ ໖໒ ນີ້ຊື່ວ່າຄວາມຍຶດຕິດດ້ວຍອຳນາດທິດຖິ

ຄຳວ່າ ພິກຂຸນັ້ນຊື່ວ່າ ຮູ້ແຈ້ງສ່ວນສຸດທັງ ໒ ດ້ານແລ້ວ ບໍ່ຍຶດຕິດໃນທ່າມກາງດ້ວຍມັນຕາ ອະທິບາຍວ່າ ພິກຂຸນັ້ນຮູ້ແຈ້ງແລ້ວ ຄື ຮູ້ແລ້ວ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງເຊິ່ງສ່ວນສຸດທັງ ໒ ແລະທ່າມກາງແລ້ວດ້ວຍປັນຍາ ຍ່ອມບໍ່ຍຶດຕິດ ຄື ບໍ່ເຂົ້າໄປຍຶດຕິດ ໄດ້ແກ່ ບໍ່ຕິດແລ້ວ ບໍ່ຕິດພ້ອມ ບໍ່ເຂົ້າໄປຕິດ ອອກແລ້ວ ສະລັດອອກແລ້ວ ບໍ່ກ່ຽວຂ້ອງແລ້ວ ມີໃຈເປັນອິດສະຫຼະ (ຈາກຄວາມຍຶດຕິດ) ຢູ່ ລວມຄວາມວ່າ ພິກຂຸນັ້ນຊື່ວ່າຮູ້ແຈ້ງສ່ວນສຸດທັງ ໒ ດ້ານແລ້ວ ບໍ່ຍຶດຕິດໃນທ່າມກາງດ້ວຍມັນຕາ

ຄຳວ່າ ເຮົາຮຽກພິກຂຸນັ້ນວ່າເປັນມະຫາບຸຣຸດ ອະທິບາຍວ່າ ເຮົາຮຽກພິກຂຸນັ້ນ ຄື ກ່າວເຖິງ ເຂົ້າໃຈ ເວົ້າເຖິງ ສະແດງເຖິງ ຖະແຫຼງຮອດພິກຂຸນັ້ນວ່າເປັນມະຫາບຸຣຸດ ຄືເປັນບຸຣຸດຜູ້ເລີດ ບຸຣຸດຜູ້ປະເສີດສຸດ ບຸຣຸດຜູ້ວິເສດ ບຸຣຸດຜູ້ເປັນປະທານ ບຸຣຸດຜູ້ເປັນຫົວໜ້າ ບຸຣຸດຜູ້ສູງສຸດ ບຸຣຸດຜູ້ປະເສີດ

ທ່ານພຣະສາຣີບຸດຂາບທູນຄຳນີ້ກັບພຣະຜູ້ມີພຣະພາກເຈົ້າວ່າ ຂ້າແຕ່ ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດຮຽກວ່າ ມະຫາບຸຣຸດ ມະຫາບຸຣຸດ ຍ້ອນເຫດອັນໃດນໍ ບຸກຄົນຈຶ່ງເປັນມະຫາບຸຣຸດ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ສາຣີບຸດ ເຮົາຮຽກວ່າ ມະຫາບຸຣຸດ ຍ້ອນເຂົາເປັນຜູ້ມີຈິດຫຼຸດພົ້ນແລ້ວ ເຮົາບໍ່ຮຽກວ່າ ມະຫາບຸຣຸດ ຍ້ອນເຂົາເປັນຜູ້ມີຈິດຍັງບໍ່ຫຼຸດພົ້ນ

ບຸກຄົນມີຈິດຫຼຸດພົ້ນແລ້ວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາເຫັນກາຍໃນກາຍ ມີຄວາມພຽນເຜົາກິເລດ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນກາຍໃນກາຍຢູ່ ຈິດຍ່ອມຄາຍກຳໜັດ ຫຼຸດພົ້ນຈາກອາສະວະທັງຫຼາຍຍ້ອນບໍ່ຖືໝັ້ນ ຯລຯ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ ພິຈາລະນາເຫັນຈິດໃນຈິດ ຯລຯ ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນເຜົາກິເລດ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ຈິດຍ່ອມຄາຍກຳໜັດ ຫຼຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນ ພິກຂຸເປັນຜູ້ມີຈິດຫຼຸດພົ້ນແລ້ວເປັນແນວນີ້ແລ ເຮົາຮຽກວ່າ ມະຫາບຸຣຸດ ຍ້ອນເຂົາເປັນຜູ້ມີຈິດຫຼຸດພົ້ນແລ້ວ ເຮົາບໍ່ຮຽກວ່າ ມະຫາບຸຣຸດ ຍ້ອນເຂົາເປັນຜູ້ມີຈິດຍັງບໍ່ຫຼຸດພົ້ນ ລວມຄວາມວ່າ ເຮົາຮຽກພິກຂຸນັ້ນວ່າ ເປັນມະຫາບຸຣຸດ

ຄຳວ່າ ພິກຂຸນັ້ນຊື່ວ່າ ລ່ວງພົ້ນເຄື່ອງຮ້ອຍຮັດໃນໂລກນີ້ໄດ້ ອະທິບາຍວ່າ ຕັນຫາ ຕັດ ຮຽກວ່າ ເຄື່ອງຮ້ອຍຮັດ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ໗ລ໗ ອະພິດຊາ ອະກຸສົນມູນ ຄື ໂລພະ ເຄື່ອງຮ້ອຍຮັດນີ້ ພິກຂຸໃດ ລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະ ງົບໄດ້ແລ້ວ ຣະງັບ ໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ພິກຂຸນັ້ນຊື່ວ່າ ລ່ວງພົ້ນ ຄື ລ່ວງ ກ້າວລ່ວງ ກ້າວພົ້ນ ລ່ວງເລີຍເຄື່ອງຮ້ອຍຮັດໄດ້ ລວມຄວາມວ່າ ພິກຂຸນັ້ນຊື່ ວ່າ ລ່ວງພົ້ນເຄື່ອງຮ້ອຍຮັດໃນໂລກນີ້ໄດ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ພິກຂຸນັ້ນຊື່ວ່າ ຮູ້ແຈ້ງສ່ວນສຸດທັງ ໘ ດ້ານແລ້ວ
ບໍ່ຍຶດຕິດໃນທ່າມກາງດ້ວຍມັນຕາ
ເຮົາຮຽກພິກຂຸນັ້ນວ່າເປັນມະຫາບຸຣຸດ
ພິກຂຸນັ້ນຊື່ວ່າລ່ວງພົ້ນເຄື່ອງຮ້ອຍຮັດໃນໂລກນີ້ໄດ້

ພ້ອມກັບການຈົບຄາຖາ ທຳມະຈັກຂຸປາສະຈາກທຸລີ ປາສະຈາກມົນທິນວ່າ ສິ່ງໃດສິ່ງໜຶ່ ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ໄດ້ເກີດຂຶ້ນ ແກ່ເຫຼົ່າເທວະດາ ແລະມະນຸດຫຼາຍພັນ ຜູ້ມີສັນທະ ຄວາມພະຍາຍາມ ຄວາມປະສົງ ການ ອົບຮົມບຸນຍາປາຣະມີຮ່ວມກັນກັບພາມ ຈິດຂອງພາມນັ້ນກໍຫຼຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ ໜັງເສືອ ຊະດາ ຜ້າຄາກອງ ໄມ້ການເທົ້າ ເຕົ້ານ້ຳ ຜົມແລະໜວດຂອງຕິດສະເມດເຕີຍະພາມ ກໍຫາຍໄປ ພ້ອມກັບການບັນລຸອະຣະຫັນຕະຜົນ ທ່ານເປັນພິກຂຸ ມີຫົວໂລ້ນ ນຸ່ງຫົ່ມຜ້າກາສະວະ ຊົງສັງຄາຕິ ບາດແລະຈີວອນ ເພື່ອການປະຕິບັດເອື້ອປະໂຫຍດ ຈຶ່ງປະຄອງອັນຊະລີ ນັ່ງລົງນະ ມັດສະການພຣະຜູ້ມີພຣະພາກເຈົ້າໂດຍປະກາດວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກ ເຈົ້າເປັນສາດສະດາ ຂອງຂ້າພຣະອົງ ຂ້າ ພຣະອົງເປັນສາວົກ

# ໖. ປຸນນະກະມານະວະປັນຫານິດເທດ

## ວ່າດ້ວຍປັນຫາຂອງປຸນນະກະມານົບ

[໑໘] (ທ່ານປຸນນະກະທູນຖາມ ດັ່ງນີ້)

ຂ້າພຣະອົງມີປັນຫາຈະທູນຖາມ ຈຶ່ງມາເຝົ້າພຣະອົງ
ຜູ້ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ຜູ້ມີປົກກະຕິເຫັນມູນ
ຣິສີ ມະນຸຊະ ກະສັດ ແລະພາມຈຳນວນຫຼາຍໃນໂລກນີ້
ອາໄສອັນໃດ ຈຶ່ງພາກັນບູຊາຍັນແກ່ເທວະດາທັງຫຼາຍ
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມປັນຫານັ້ນ

ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ (໑)

ຄຳວ່າ ພຣະອົງຜູ້ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ຜູ້ມີປົກກະຕິເຫັນມູນ ອະທິບາຍວ່າ ຕັນຫາຕັດຮຽກວ່າ ເຫດໃຫ້ຫວັ່ນໄຫວ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນຄື ໂລພະ

ຕັນຫາເຫດໃຫ້ຫວັ່ນໄຫວນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າຊົງລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ ບໍ່ມີເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຊື່ວ່າບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ຍ້ອນພຣະອົງຊົງລະຕັນຫາເຫດໃຫ້ຫວັ່ນໄຫວໄດ້ແລ້ວ ຈຶ່ງຊື່ວ່າຜູ້ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ພຣະຜູ້ມີພຣະພາກເຈົ້າບໍ່ຊົງຫວັ່ນໄຫວ ຄື ບໍ່ຊົງສະເທືອນ ບໍ່ເຄື່ອນໄຫວ ບໍ່ສະທ້ານ ບໍ່ສັ່ນສະທ້ານ ຍ້ອນໄດ້ລາບ ຍ້ອນເສື່ອມລາບແດ່ ຍ້ອນໄດ້ຍົດ ຍ້ອນເສື່ອມຍົດແດ່ ຍ້ອນສັນເສີນ ຍ້ອນນິນທາແດ່ ຍ້ອນສຸກ ຍ້ອນທຸກແດ່ ລວມຄວາມວ່າ ພຣະອົງຜູ້ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ

## ວ່າດ້ວຍກຸສົນມູນແລະອະກຸສົນມູນ ໓

ຄຳວ່າ ຜູ້ມີປົກກະຕິເຫັນມູນ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຜູ້ມີປົກກະຕິເຫັນມູນ ຄື ຊົງເຫັນເຫດ ຊົງເຫັນຕົ້ນເຫດ ຊົງເຫັນການເກີດຂຶ້ນ ຊົງເຫັນແດນເກີດ ຊົງເຫັນສະມຸດຖານ ຊົງເຫັນອາຫານ ຊົງເຫັນອາລົມ ຊົງເຫັນປັດໄຈ ຊົງເຫັນເຫດເກີດ

ອະກຸສົນມູນ ໓ ປະການ ຄື

໑. ອະກຸສົນມູນ ຄື ໂລພະ
໒. ອະກຸສົນມູນ ຄື ໂທສະ
໓. ອະກຸສົນມູນ ຄື ໂມຫະ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ຕົ້ນເຫດໃຫ້ເກີດກຳ ໓ ປະການ ເຫຼົ່ານີ້ ຕົ້ນເຫດໃຫ້ເກີດກຳ ໓ ປະການ ອັນໃດແດ່ ຄື

໑. ໂລພະ ເປັນຕົ້ນເຫດໃຫ້ເກີດກຳ
໒. ໂທສະ ເປັນຕົ້ນເຫດໃຫ້ເກີດກຳ
໓. ໂມຫະ ເປັນຕົ້ນເຫດໃຫ້ເກີດກຳ

ພິກຂຸທັງຫຼາຍ ຍ້ອນກຳທີ່ເກີດຈາກໂລພະ ຍ້ອນກຳທີ່ເກີດຈາກໂທສະ ຍ້ອນກຳທີ່ເກີດຈາກໂມຫະ ເທວະດາມະນຸດ ຫຼື ສຸກຄະຕິອື່ນແນວໃດແນວໜຶ່ງກໍບໍ່ຜາກົດທີ່ແທ້ແລ ຍ້ອນກຳທີ່ເກີດ

ຈາກໂລພະ ຍ້ອນກຳທີ່ເກີດຈາກໂທສະ ຍ້ອນກຳທີ່ເກີດຈາກໂມຫະ ນະຣົກ ກຳເນີດເດຍຣັດສານ ເຜດວິໄສ ຫຼື ທຸກຄະຕິອື່ນແນວໃດແນວໜຶ່ງ ກໍຜາກົດເພື່ອຄວາມບັງເກີດແຫ່ງອັດຕະພາບໃນນະຣົກ ກຳເນີດເດຍຣັດສານ ເຜດວິໄສ ອະກຸສົນມູນ ໓ ປະການນີ້ ພຣະຜູ້ມີພຣະພາກເຈົ້າຊົງຮູ້ ຊົງເຫັນ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຜູ້ມີປົກກະຕິເຫັນມູນ ໆລໆ ຊົງເຫັນເຫດເກີດ ແນວນີ້ແດ່

ກຸສົນມູນ ໓ ປະການ ຄື

໑. ກຸສົນມູນ ຄື ອະໂລພະ
໒. ກຸສົນມູນ ຄື ອະໂທສະ
໓. ກຸສົນມູນ ຄື ອະໂມຫະ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ຕົ້ນເຫດໃຫ້ເກີດກຳ ໓ ປະການນີ້ ໆລໆ ພິກຂຸທັງຫຼາຍ ຍ້ອນກຳທີ່ເກີດຈາກອະໂລພະ ຍ້ອນກຳທີ່ເກີດຈາກອະໂທສະ ຍ້ອນກຳທີ່ເກີດຈາກອະໂມຫະ ນະຣົກ ກຳເນີດເດຍຣັດສານ ເຜດວິໄສ ຫຼື ທຸກຄະຕິອື່ນແນວໃດແນວໜຶ່ງ ກໍບໍ່ຜາກົດ ທີ່ແທ້ແລ ຍ້ອນກຳທີ່ເກີດຈາກອະໂລພະ ຍ້ອນກຳທີ່ເກີດຈາກອະໂທສະ ຍ້ອນກຳທີ່ເກີດຈາກອະໂມຫະ ເທວະດາ ມະນຸດ ຫຼື ສຸກຄະຕິອື່ນແນວໃດແນວໜຶ່ງ ກໍຜາກົດເພື່ອຄວາມບັງເກີດແຫ່ງອັດຕະພາບໃນເທວະດາ ມະນຸດ ກຸສົນມູນ ໓ ປະການນີ້ ພຣະຜູ້ມີພຣະພາກເຈົ້າຊົງຮູ້ ຊົງເຫັນ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຜູ້ມີປົກກະຕິເຫັນມູນ ໆລໆ ຊົງເຫັນເຫດເກີດ ແນວນີ້ແດ່

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ທຳແນວໃດແນວໜຶ່ງ ເປັນອະກຸສົນ ເປັນສ່ວນອະກຸສົນ ເປັນຝ່າຍອະກຸສົນ ທຳເຫຼົ່ານັ້ນທັງໝົດ ລ້ວນມີອະວິດຊາເປັນມູນຮາກ ມີອະວິດຊາເປັນແຫຼ່ງລວມ ທຳເຫຼົ່ານັ້ນທັງໝົດມີອະວິດຊາອັນອະຣະຫັນຕະມັກ ກຳຈັດໄດ້ລ້ວນເຖິງຄວາມເພີກຖອນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ ຊົງເຫັນ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຜູ້ມີປົກກະຕິເຫັນມູນ ໆລໆ ຊົງເຫັນເຫດເກີດ ແນວນີ້ແດ່

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ທຳເຫຼົ່າໃດເຫຼົ່າໜຶ່ງ ເປັນກຸສົນ ເປັນສ່ວນກຸສົນ ເປັນຝ່າຍກຸສົນ ທຳເຫຼົ່ານັ້ນທັງໝົດ ມີຄວາມບໍ່ຜະໝາດເປັນມູນ ລວມລົງໃນຄວາມບໍ່ຜະໝາດ ຄວາມບໍ່ຜະໝາດບັນດິດກ່າວວ່າ ເປັນຍອດແຫ່ງທຳເຫຼົ່ານັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ ຊົງເຫັນ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຜູ້ມີປົກກະຕິເຫັນມູນ ໆລໆ ຊົງເຫັນເຫດເກີດ ແນວນີ້ແດ່

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງຮູ້ ຊົງເຫັນວ່າ ອະວິດຊາເປັນມູນແຫ່ງສັງຂານ ສັງຂານເປັນມູນແຫ່ງວິນຍານ ວິນຍານເປັນມູນແຫ່ງນາມຮູບ ນາມຮູບເປັນມູນແຫ່ງສາລະຍະຕະນະ ສາລະຍະຕະນະເປັນມູນແຫ່ງຜັດສະ ຜັດສະເປັນມູນແຫ່ງເວທະນາ ເວທະນາເປັນມູນແຫ່ງ

ຕັນຫາ ຕັນຫາເປັນມູນແຫ່ງອຸປາທານ ອຸປາທານເປັນມູນແຫ່ງພົບ ພົບເປັນມູນແຫ່ງຊາດ ຊາດເປັນມູນແຫ່ງຊະຣາແລະມໍຣະນະ ພຣະຜູ້ມີພຣະພາກເຈົ້າຊົງຮູ້ ຊົງເຫັນ ພຣະຜູ້ມີພຣະພາກເຈົ້າຊື່ວ່າຜູ້ມີປົກກະຕິເຫັນມູນ ຯລຯ ຊົງເຫັນເຫດເກີດ ແນວນີ້ແດ່

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງຮູ້ ຊົງເຫັນວ່າ ຈັກຂຸປະສາດເປັນມູນແຫ່ງໂຣກຕາ ໂສຕະປະສາດເປັນມູນແຫ່ງໂຣກຫູ ຄານະປະສາດເປັນມູນແຫ່ງໂຣກດັງ ຊິວຫາປະສາດເປັນມູນແຫ່ງໂຣກລີ້ນ ກາຍະປະສາດເປັນມູນແຫ່ງໂຣກກາຍ ພຣະຜູ້ມີພຣະພາກເຈົ້າຊົງຮູ້ ຊົງເຫັນວ່າມະໂນປະສາດເປັນມູນແຫ່ງທຸກທາງໃຈ

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຜູ້ມີປົກກະຕິເຫັນມູນ ຊົງເຫັນເຫດ ຊົງເຫັນຕົ້ນເຫດ ຊົງເຫັນການເກີດຂຶ້ນ ຊົງເຫັນແດນເກີດ ຊົງເຫັນສະມຸດຖານ ຊົງເຫັນອາຫານ ຊົງເຫັນອາລົມ ຊົງເຫັນປັດໄຈ ຊົງເຫັນເຫດເກີດ ແນວນີ້ແດ່ ລວມຄວາມວ່າ ພຣະອົງຜູ້ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ຜູ້ມີປົກກະຕິເຫັນມູນ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານປຸນນະກະທູນຖາມ ດັ່ງນີ້ ເປັນບົດສົນທິ ຯລຯ ລວມຄວາມວ່າ ທ່ານປຸນນະກະທູນຖາມ ດັ່ງນີ້

ຄຳວ່າ ຂ້າພຣະອົງມີບັນຫາຈະທູນຖາມ ຈຶ່ງມາເຝົ້າ ອະທິບາຍວ່າ ຂ້າພຣະອົງມີຄວາມຕ້ອງການດ້ວຍບັນຫາ ຈຶ່ງມາເຝົ້າ ຄື ຂ້າພຣະອົງຕ້ອງການຖາມບັນຫາ ຈຶ່ງມາເຝົ້າ ຂ້າພຣະອົງຕ້ອງການຟັງບັນຫາ ຈຶ່ງມາເຝົ້າ ລວມຄວາມວ່າ ຂ້າພຣະອົງມີບັນຫາຈະທູນຖາມຈຶ່ງມາເຝົ້າ

ອີກໄນໜຶ່ງ ຂ້າພຣະອົງຕ້ອງການບັນຫາ ຄື ຕ້ອງການຖາມບັນຫາ ຕ້ອງການຟັງບັນຫາຈຶ່ງມາເຝົ້າ ຄື ເຂົ້າມາ ເຂົ້າມາເຝົ້າ ເຂົ້າມານັ່ງເຝົ້າ ລວມຄວາມວ່າ ຂ້າພຣະອົງມີບັນຫາຈະທູນຖາມ ຈຶ່ງມາເຝົ້າ ແນວນີ້ແດ່

ອີກໄນໜຶ່ງ ພຣະອົງຊົງມີຄວາມຕ້ອງການບັນຫາຈຶ່ງສະເດັດມາ ຄື ແມ່ນພຣະອົງກໍຊົງເປັນຜູ້ອົງອາດ ຊົງສາມາດ ຊົງສົມຄວນເພື່ອຕັດ ວິສັດຊະນາ ຊີ້ແຈ່ງ ຊົງກ່າວເຖິງບັນຫາທີ່ຂ້າພຣະອົງທູນຖາມແລ້ວ ອະທິບາຍວ່າ ຂໍພຣະອົງ ຊົງພາຣະນີ້ ລວມຄວາມວ່າ ຂ້າພຣະອົງມີບັນຫາຈະທູນຖາມ ຈຶ່ງມາເຝົ້າ ແນວນີ້ແດ່

ຄຳວ່າ ອາໄສອັນໃດ ໃນຄຳວ່າ ຣືສີ ມະນຸຊະ ຯລຯ ອາໄສອັນໃດ ອະທິບາຍວ່າອາໄສ ຄື ຫວັງ ເຍື່ອໃຍ ເຂົ້າໃກ້ ພົວພັນ ນ້ອມໃຈເຊື່ອອັນໃດ

ຄຳວ່າ ຣືສີ ອະທິບາຍວ່າ ຄົນພວກໃດພວກໜຶ່ງທີ່ບວດເປັນຣືສີ ໄດ້ແກ່ ອາຊີວະກະນິຄົນ ຊະດິນ ດາບົດ ຮຽກຊື່ວ່າຣືສີ ພວກມະນຸດຕັດຮຽກວ່າ ມະນຸຊະ ລວມຄວາມວ່າ ຣືສີ ມະນຸຊະ ຯລຯ ອາໄສອັນໃດ

ຄຳວ່າ ກະສັດ ໃນຄຳວ່າ ກະສັດ ພາມ ຯລຯ ແກ່ເທວະດາທັງຫຼາຍ ໄດ້ແກ່ ຄົນພວກໃດພວກໜຶ່ງທີ່ເກີດໃນວັນນະກະສັດ

ຄຳວ່າ ພາມ ໄດ້ແກ່ ຄົນພວກໃດພວກໜຶ່ງ ຜູ້ກ່າວອ້າງວ່າຕົນເປັນຜູ້ຈະເລີນ

# ວ່າດ້ວຍເທວະດາ

ຄຳວ່າ ແກ່ເທວະດາທັງຫຼາຍ ອະທິບາຍວ່າ ພວກອາຊີວະກະ ເປັນເທວະດາຂອງສາວົກຂອງອາຊີວະກະ ພວກນິຄົນ ເປັນເທວະດາຂອງສາວົກຂອງນິຄົນ ພວກຊະດິນ ເປັນເທວະດາຂອງສາວົກຂອງຊະດິນ ພວກປະຣິພາຊົກ ເປັນເທວະດາຂອງສາວົກຂອງປະຣິພາຊົກ ພວກດາບົດ ເປັນເທວະດາຂອງສາວົກຂອງດາບົດ ຊ້າງ ເປັນເທວະດາຂອງພວກປະພຶດຫັດຖີ ພະຣະຕະ ມ້າ ເປັນເທວະດາຂອງພວກປະພຶດອັດສະພະຣະຕິ ງົວ ເປັນເທວະດາຂອງພວກປະພຶດໂຄພະຣະຕະ ໝາ ເປັນເທວະດາຂອງພວກປະພຶດກຸກກຸຣະພະຣະຕະ ກາ ເປັນເທວະດາຂອງພວກປະພຶດກາກະພະຣະຕະ ທ້າວວາສຸເທບ ເປັນເທວະດາຂອງພວກປະພຶດວາສຸເທວະພະຣະຕະ ພະລະເທບ ເປັນເທວະດາຂອງພວກປະພຶດພະລະເທວະພະຣະຕະ ທ້າວປຸນນະພັນທະຣະ ເປັນເທວະດາຂອງພວກປະພຶດປຸນນະພັນທະຣະພະຣະຕະ ທ້າວມະນີພັນທະຣະ ເປັນເທວະດາຂອງພວກປະພຶດມະນີພັນທະຣະພະຣະຕະ ໄຟ ເປັນເທວະດາຂອງພວກປະພຶດອັກຄີພະຣະຕະ ນາກ ເປັນເທວະດາຂອງພວກປະພຶດນາຄະພະຣະຕະ ຄຸດ ເປັນເທວະດາຂອງພວກປະພຶດສຸປັນນະພະຣະຕະ ຍັກ ເປັນເທວະດາຂອງພວກປະພຶດຍັກຂະພະຣະຕະ ອະສູນ ເປັນເທວະດາຂອງພວກປະພຶດອະສຸຣະພະຣະຕະ ຄົນທັນ ເປັນເທວະດາຂອງພວກປະພຶດຄົນທັນພະຣະຕະ ທ້າວມະຫາຣາດ ເປັນເທວະດາຂອງພວກປະພຶດມະຫາຣາຊະພະຣະຕະ ພຣະຈັນ ເປັນເທວະດາຂອງພວກປະພຶດຈັນທະພະຣະຕະ ພຣະອາທິດ ເປັນເທວະດາຂອງພວກປະພຶດສຸຣິຍະພະຣະຕະ ພຣະອິນ ເປັນເທວະດາຂອງພວກປະພຶດອິນທະພະຣະຕະ ພົມ ເປັນເທວະດາຂອງພວກປະພຶດພົມມະພະຣະຕະ ທິດທັງຫຼາຍ ເປັນເທວະດາຂອງພວກປະພຶດທິສາພະຣະຕະ ຄົນ ສັດແລະສິ່ງເຫຼົ່າໃດ ຜູ້ຄວນແກ່ທັກຂິນາຂອງຊົນ ເຫຼົ່າໃດ ຄົນ ສັດ ແລະ ສິ່ງເຫຼົ່ານັ້ນ ເປັນເທວະດາຂອງຊົນເຫຼົ່ານັ້ນ ລວມຄວາມວ່າ ກະສັດ ພາມ ຯລຯ ແກ່ເທວະດາທັງຫຼາຍ

ຄຳວ່າ ຈຳນວນຫຼາຍໃນໂລກນີ້ ຯລຯ ຈຶ່ງພາກັນບູຊາຍັນ ອະທິບາຍວ່າ ໄທຍະທຳ ໄດ້ແກ່ ຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານ ເຂົ້າ ນ້ຳ ຜ້າ ຍານ ພວງດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ເຄື່ອງປະທີບ ຮຽກວ່າ ຍັນ

ຄຳວ່າ ຈຶ່ງພາກັນບູຊາຍັນ ອະທິບາຍວ່າ ຄົນແມ່ນເຫຼົ່າໃດສະແຫວງຫາ ຄົ້ນຫາ ເສາະຫາຍັນ ຄື ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ເຂົ້າ ນ້ຳ ຜ້າ ຍານ ພວງດອກໄມ້ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ເຄື່ອງປະທີບ ຄົນແມ່ນເຫຼົ່ານັ້ນ ຊື່ວ່າ ບູຊາຍັນ

ຄົນແມ່ນເຫຼົ່າໃດ ໃຫ້ ສະລະ ບໍລິຈາກຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານ ເຂົ້າ ນ້ຳ ຜ້າ ຍານ ພວງດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ເຄື່ອງປະທີບ ຄົນແມ່ນເຫຼົ່ານັ້ນ ຊື່ວ່າບູຊາຍັນ

ຄຳວ່າ ຈຳນວນຫຼາຍ ອະທິບາຍວ່າ ຍັນເຫຼົ່ານີ້ຫຼາຍ ຜູ້ບູຊາຍັນກໍຫຼາຍ ຜູ້ຄວນແກ່ທັກຂິນານັ້ນກໍຫຼາຍ

ຍັນເຫຼົ່ານັ້ນຫຼາຍ ແນວໃດ?

ຍັນເຫຼົ່ານັ້ນ ຄື ຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານ ເຂົ້າ ນ້ຳ ຜ້າ ຍານ ພວງດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ເຄື່ອງປະທີບ ມີຫຼາຍແກ່ຊົນຈຳນວນຫຼາຍ ຍັນເຫຼົ່ານັ້ນ ຊື່ວ່າຫຼາຍ ແນວນີ້ແດ່

ຜູ້ບູຊາຍັນນັ້ນຫຼາຍ ຄື ກະສັດກໍຫຼາຍ ພາມກໍຫຼາຍ ແພດກໍຫຼາຍ ສູດກໍຫຼາຍ ຄະລືຫັດກໍຫຼາຍ ບັນພະຊິດກໍຫຼາຍ ເທວະດາແລະມະນຸດກໍຫຼາຍ ຜູ້ບູຊາຍັນຫຼາຍ ແນວນີ້ແດ່

ບຸກຄົນຜູ້ຄວນທັກຂິນາເຫຼົ່ານັ້ນຫຼາຍ ແນວໃດ

ຄື ບຸກຄົນຜູ້ຄວນທັກຂິນາເຫຼົ່ານັ້ນ ມີຫຼາຍ ຄື ສະມະນະກໍຫຼາຍ ພາມກໍຫຼາຍ ຄົນກຳພ້າກໍຫຼາຍ ຄົນເດີນທາງກໍຫຼາຍ ວະນິພົກກໍຫຼາຍ ແລະຍາຈົກກໍຫຼາຍ ບຸກຄົນຜູ້ຄວນທັກຂິນາເຫຼົ່ານັ້ນຊື່ວ່າຫຼາຍ ແນວນີ້ແດ່

ຄຳວ່າ ໃນໂລກນີ້ ຄື ໃນມະນຸດໂລກ ລວມຄວາມວ່າ ຈຳນວນຫຼາຍໃນໂລກນີ້ ຯລຯ ຈຶ່ງພາກັນບູຊາຍັນ

## ວ່າດ້ວຍການຖາມ ໓

ຄຳວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ ອະທິບາຍວ່າ

ຄຳວ່າ ຂໍທູນຖາມ ໄດ້ແກ່ ການຖາມ ໓ ຢ່າງ ຄື

໑. ການຖາມເພື່ອເຮັດໃຫ້ຊັດເຈນໃນສິ່ງທີ່ຍັງບໍ່ເຄີຍເຫັນ
໒. ການຖາມເພື່ອທຽບຄຽງໃນສິ່ງທີ່ເຄີຍເຫັນແລ້ວ
໓. ການຖາມເພື່ອຕັດຄວາມສົງໄສ

ການຖາມເພື່ອເຮັດໃຫ້ຊັດເຈນໃນສິ່ງທີ່ຍັງບໍ່ເຄີຍເຫັນ ເປັນແນວໃດ?

ຄື ໂດຍປົກກະຕິລັກສະນະໃດ ຕົນຍັງບໍ່ຮູ້ ຍັງບໍ່ເຫັນ ຍັງບໍ່ໄດ້ທຽບຄຽງ ຍັງບໍ່ໄດ້ພິຈາລະນາ ຍັງບໍ່ໄດ້ເຮັດໃຫ້ກະຈ່າງ ຍັງບໍ່ໄດ້ເຮັດໃຫ້ຊັດແຈ້ງ ກໍຖາມບັນຫາເພື່ອຮູ້ ເພື່ອເຫັນ ເພື່ອທຽບຄຽງ ເພື່ອພິຈາລະນາ ເພື່ອເຮັດໃຫ້ລັກສະນະນັ້ນຊັດແຈ້ງ ນີ້ຊື່ວ່າການຖາມເພື່ອເຮັດໃຫ້ຊັດເຈນໃນສິ່ງທີ່ຍັງບໍ່ເຄີຍເຫັນ

ການຖາມເພື່ອທຽບຄຽງໃນສິ່ງທີ່ເຄີຍເຫັນແລ້ວ ເປັນແນວໃດ?

ຄື ໂດຍປົກກະຕິລັກສະນະໃດ ຕົນຮູ້ ເຫັນ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວ ກໍຖາມບັນຫາ ເພື່ອທຽບຄຽງລັກສະນະນັ້ນກັບບັນດິດອື່ນ ນີ້ຊື່ວ່າການຖາມເພື່ອທຽບຄຽງໃນສິ່ງທີ່ເຄີຍເຫັນແລ້ວ

ການຖາມເພື່ອຕັດຄວາມສົງໄສ ເປັນແນວໃດ?

ຄື ໂດຍປົກກະຕິບຸກຄົນເປັນຜູ້ແລ່ນໄປສູ່ຄວາມສົງໄສ ແລ່ນໄປສູ່ຄວາມເຄືອບແຄງ ເກີດຄວາມຄິດເປັນສອງແງ່ວ່າ ເປັນແນວນີ້ບໍ່ນໍ ເປັນອັນໃດ ຫຼື ເປັນແນວໃດນໍ ເຂົາກໍຖາມບັນຫາເພື່ອຕັດຄວາມສົງໄສ ນີ້ຊື່ວ່າການຖາມເພື່ອຕັດຄວາມສົງໄສ ເຫຼົ່ານີ້ຊື່ວ່າການຖາມ ໓ ຢ່າງ

ການຖາມອີກ ໓ ຢ່າງ ຄື

໑. ການຖາມຂອງ ມະນຸດ
໒. ການຖາມຂອງ ອະມະນຸດ
໓. ການຖາມຂອງ ຮູບເນຣະມິດ

ການຖາມຂອງມະນຸດ ເປັນແນວໃດ?

ຄື ພວກມະນຸດເຂົ້າເຝົ້າພຣະຜູ້ມີພຣະພາກພຸດທະເຈົ້າແລ້ວທູນຖາມບັນຫາ ຄື ພວກພິກຂຸກໍທູນຖາມ ພິກຂຸນີກໍທູນຖາມ ອຸປາສົກກໍທູນຖາມ ອຸປາສິກາກໍທູນຖາມ ພຣະຣາຊາກໍທູນຖາມ ກະສັດກໍທູນຖາມ ພາມກໍທູນຖາມ ແພດກໍທູນຖາມ ສູດກໍທູນຖາມ ຄະລືຫັດກໍທູນຖາມ ບັນພະຊິດກໍທູນຖາມ ນີ້ຊື່ວ່າການຖາມຂອງມະນຸດ

ການຖາມຂອງອະມະນຸດ ເປັນແນວໃດ?

ຄື ພວກອະມະນຸດເຂົ້າເຝົ້າພຣະຜູ້ມີພຣະພາກພຸດທະເຈົ້າແລ້ວທູນຖາມບັນຫາ ຄື ພວກນາກກໍທູນຖາມ ຄຸດກໍທູນຖາມ ຍັກກໍທູນຖາມ ອະສູນກໍທູນຖາມ ຄົນທັບກໍທູນຖາມ ທ້າວມະຫາຣາດກໍທູນຖາມ ພຣະອິນກໍທູນຖາມ ພຣະພົມກໍທູນຖາມ ເທວະດາກໍທູນຖາມ ນີ້ຊື່ວ່າການຖາມຂອງອະມະນຸດ

ການຖາມຂອງຮູບເນຣະມິດ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຊົງເນຣະມິດພຣະຮູບໃດ ເຊິ່ງສຳເລັດດ້ວຍພຣະຫະໄທ ມີອະໄວຍະວະນ້ອຍໃຫຍ່ຄົບທຸກຢ່າງ ມີອິນຊີບໍ່ບົກຜ່ອງ ພຣະຮູບເນຣະມິດນັ້ນ ເຂົ້າເຝົ້າພຣະຜູ້ມີພຣະພາກພຸດທະເຈົ້າແລ້ວ ກໍທູນຖາມບັນຫາ ພຣະຜູ້ມີພຣະພາກເຈົ້າຊົງວິສັດຊະນາ ນີ້ຊື່ວ່າການຖາມຂອງຮູບເນຣະມິດ ເຫຼົ່ານີ້ຊື່ວ່າການຖາມອີກ ໓ ຢ່າງ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເພື່ອປະໂຫຍດ ຕົນ
໒. ການຖາມເພື່ອປະໂຫຍດ ຜູ້ອື່ນ
໓. ການຖາມເພື່ອປະໂຫຍດ ຕົນແລະຜູ້ອື່ນ

ການຖາມອີກ ໓ ຢ່າງ ຄື
໑. ການຖາມເພື່ອປະໂຫຍດ ໃນພົບປັດຈຸບັນ
໒. ການຖາມເພື່ອປະໂຫຍດ ໃນພົບໜ້າ
໓. ການຖາມເພື່ອປະໂຫຍດ ຢ່າງຍິ່ງ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເພື່ອປະໂຫຍດທີ່ ບໍ່ມີໂທດ
໒. ການຖາມເພື່ອປະໂຫຍດທີ່ ປາສະຈາກກິເລດ
໓. ການຖາມເພື່ອປະໂຫຍດທີ່ ຜຸດຜ່ອງ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງ ອະດີດ
໒. ການຖາມເຖິງ ອະນາຄົດ
໓. ການຖາມເຖິງ ປັດຈຸບັນ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງເລື້ອງ ພາຍໃນ
໒. ການຖາມເຖິງເລື້ອງ ພາຍນອກ
໓. ການຖາມເຖິງເລື້ອງ ທັງພາຍໃນແລະພາຍນອກ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງ ກຸສົນທຳ
໒. ການຖາມເຖິງ ອະກຸສົນທຳ
໓. ການຖາມເຖິງ ອັບພະຍາກະຕະທຳ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງ ຂັນ

໒. ການຖາມເຖິງ ທາດ
໓. ການຖາມເຖິງ ອາຍະຕະນະ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງ ສະຕິປັດຖານ
໒. ການຖາມເຖິງສໍາມັບປະທານ
໓. ການຖາມເຖິງອິດທິບາດ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງ ອິນຊີ
໒. ການຖາມເຖິງ ພະລະ
໓. ການຖາມເຖິງ ໂພດຊົງ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງ ມັກ
໒. ການຖາມເຖິງ ຜົນ
໓. ການຖາມເຖິງ ນິບພານ

ຄໍາວ່າ ຂ້າພຣະອົງຂໍທູນຖາມບັນຫານັ້ນ ອະທິບາຍວ່າ ຂ້າພຣະອົງຂໍທູນຖາມພຣະອົງ ຄື ທູນຂໍ ທູນອັນເຊີນ ທູນຂໍໃຫ້ຊົງປະກາດວ່າ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງເທີ້ນ ລວມຄວາມວ່າ ຂ້າພຣະອົງຂໍທູນຖາມບັນຫານັ້ນ

ຄໍາວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄໍາກ່າວໂດຍຄວາມເຄົາລົບ ຯລຯ ຄໍາວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ

ຄໍາວ່າ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ ອະທິບາຍວ່າ ຂໍໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກໍານົດ ເປີດເຜີຍ ຈໍາແນກ ເຮັດໃຫ້ງ່າຍ ປະກາດ ລວມຄວາມວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ ດ້ວຍເຫດນັ້ນ ພາມນັ້ນຈຶ່ງທູນຖາມວ່າ

(ທ່ານປຸນນະກະທູນຖາມ ດັ່ງນີ້)

ຂ້າພຣະອົງມີບັນຫາຈະທູນຖາມ ຈຶ່ງມາເຝົ້າພຣະອົງ
ຜູ້ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ຜູ້ມີປົກກະຕິເຫັນມູນ
ຣືສີ ມະນຸຊະ ກະສັດ ແລະພາມຈໍານວນຫຼາຍໃນໂລກນີ້

ອາໄສອັນໃດ ຈຶ່ງພາກັນບູຊາຍັນແກ່ເທວະດາທັງຫຼາຍ
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ

[໑໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ)

ຣືສີ ມະນຸຊະ ກະສັດ ພາມບາງພວກເຫຼົ່ານີ້
ຈຳນວນຫຼາຍໃນໂລກນີ້ ພາກັນບູຊາຍັນແກ່ເທວະດາທັງຫຼາຍ
ປຸນນະກະ ຊົນເຫຼົ່ານັ້ນຫວັງຄວາມເປັນແນວນີ້
ອາໄສຊະຣາຈຶ່ງພາກັນບູຊາຍັນ (໔)

ຄຳວ່າ ບາງພວກເຫຼົ່ານີ້ ໃນຄຳວ່າ ຣືສີ ມະນຸຊະ ฯລฯ ບາງພວກເຫຼົ່ານີ້ ໄດ້ແກ່ ທຸກສິ່ງໂດຍອາການທັງໝົດ ທຸກຢ່າງ ບໍ່ເຫຼືອ ບໍ່ມີສ່ວນເຫຼືອໂດຍປະການທັງປວງ ຄຳວ່າ ບາງພວກເຫຼົ່ານີ້ ນີ້ເປັນຄຳກ່າວລວມ ໆ ໄວ້ທັງໝົດ

ຄຳວ່າ ຣືສີ ອະທິບາຍວ່າ ຄົນພວກໃດພວກໜຶ່ງທີ່ບວດເປັນຣືສີ ໄດ້ແກ່ ອາຊີວະກະ ນີຄົນ ຊະດິນ ດາບົດ ຮຽກຊື່ວ່າຣືສີ ພວກມະນຸດ ຕັດຮຽກວ່າ ມະນຸຊະ ລວມຄວາມວ່າ ຣືສີ ມະນຸຊະ ฯລฯ ບາງພວກເຫຼົ່ານີ້

ຄຳວ່າ ປຸນນະກະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ฯລฯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ

ຄຳວ່າ ກະສັດ ໃນຄຳວ່າ ກະສັດ ພາມ ฯລฯ ແກ່ເທວະດາທັງຫຼາຍ ໄດ້ແກ່ ຄົນພວກໃດພວກໜຶ່ງທີ່ເກີດໃນວັນນະກະສັດ

ຄຳວ່າ ພາມ ໄດ້ແກ່ ຊົນເຫຼົ່າໃດເຫຼົ່າໜຶ່ງຜູ້ກ່າວອ້າງວ່າຕົນເປັນຜູ້ຈະເລີນ

ຄຳວ່າ ແກ່ເທວະດາທັງຫຼາຍ ອະທິບາຍວ່າ ພວກອາຊີວະກະເປັນເທວະດາຂອງສາວົກຂອງອາຊີວະກະ ฯລฯ ທິດທັງຫຼາຍເປັນເທວະດາຂອງພວກປະພຶດທິສາພະຣະຕະ ຄົນ ສັດ ແລະສິ່ງເຫຼົ່າໃດ ຜູ້ຄວນແກ່ທັກຂິນາຂອງຊົນເຫຼົ່າໃດ ຄົນ ສັດແລະສິ່ງເຫຼົ່ານັ້ນເປັນເທວະດາຂອງຊົນເຫຼົ່ານັ້ນ ລວມຄວາມວ່າ ກະສັດ ພາມ ฯລฯ ແກ່ເທວະດາທັງຫຼາຍ

ຄຳວ່າ ຈຳນວນຫຼາຍໃນໂລກນີ້ ພາກັນບູຊາຍັນ ອະທິບາຍວ່າ ໄທຍະທຳ ໄດ້ແກ່ ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ເຂົ້າ ນໍ້າ ຜ້າ ຍານ ພວງດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນຢູ່ອາໄສ ເຄື່ອງປະທີບ ຮຽກວ່າ ຍັນ

ຄຳວ່າ ພາກັນບູຊາຍັນ ອະທິບາຍວ່າ ຊົນແມ່ນເຫຼົ່າໃດສະແຫວງຫາ ຄົ້ນຫາ ເສາະຫາຍັນ ຄື ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ເຂົ້າ ນໍ້າ ຜ້າ

ຍານ ພວງດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ເຄື່ອງປະທີບ ຊົນແມ່ນເຫຼົ່າ ນັ້ນຊື່ວ່າ ບູຊາຍັນ

ຊົນແມ່ນເຫຼົ່າໃດປຸງແຕ່ງຍັນ ຄື ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດ ໄຈເພສັດບໍຣິຂານ ເຂົ້າ ນໍ້າ ຯລຯ ບ່ອນນອນ ບ່ອນພັກ ເຄື່ອງປະທີບ ຊົນແມ່ນເຫຼົ່ານັ້ນ ຊື່ວ່າ ບູຊາຍັນ

ຊົນແມ່ນເຫຼົ່າໃດ ໃຫ້ ສະລະ ບໍລິຈາກຍັນ ຄື ຈີວອນ ບິນທະບາດ ເສນາສະນະ ຄິລາ ນະປັດໄຈເພສັດບໍຣິຂານ ເຂົ້າ ນໍ້າ ຯລຯ ບ່ອນນອນ ບ່ອນພັກອາໄສ ເຄື່ອງປະທີບ ຊົນແມ່ນ ເຫຼົ່ານັ້ນກໍຊື່ວ່າບູຊາຍັນ

ຄໍາວ່າ ຈໍານວນຫຼາຍ ອະທິບາຍວ່າ ຍັນເຫຼົ່ານັ້ນ ມີຫຼາຍ ຜູ້ບູຊາຍັນເຫຼົ່ານີ້ມີຫຼາຍ ຫຼື ບຸກ ຄົນຜູ້ຄວນແກ່ທັກຂິນາມີຫຼາຍແນວນີ້

ຄໍາວ່າ ໃນໂລກນີ້ ໄດ້ແກ່ ໃນມະນຸດໂລກ ລວມຄວາມວ່າ ຈໍານວນຫຼາຍໃນໂລກນີ້ ພາ ກັນບູຊາຍັນ

ຄໍາວ່າ ຫວັງ ໃນຄໍາວ່າ ປຸນນະກະ ຊົນເຫຼົ່ານັ້ນຫວັງຄວາມເປັນແນວນີ້ ອະທິບາຍວ່າ ຫວັງ ຄື ຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງການໄດ້ຮູບ ການໄດ້ສຽງ ການໄດ້ກິ່ນ ການໄດ້ຣົດ ການໄດ້ໂຜດຖັບພະ ການໄດ້ບຸດ ການໄດ້ຊັບ ການໄດ້ຍົດ ການໄດ້ຄວາມເປັນໃຫຍ່ ການໄດ້ອັດຕະພາບໃນຕະກູນກະສັດມະຫາສານ ການໄດ້ອັດຕະພາບໃນຕະກູນ ພາມມະຫາ ສານ ການໄດ້ອັດຕະພາບໃນຕະກູນຄະຫະບໍດີມະຫາສານ ການໄດ້ອັດຕະພາບໃນໝູ່ເທບຊັ້ນຈາ ຕຸມະຫາຣາຊິກາ ຯລຯ ໃນໝູ່ເທບຊັ້ນຕາວະຕິງສາ ຯລຯ ໃນໝູ່ເທບຊັ້ນຍາມາ ຯລຯ ໃນໝູ່ ເທບຊັ້ນດຸສິດ ຯລຯ ໃນໝູ່ເທບຊັ້ນນິມມານະຣະດີ ຯລຯ ໃນໝູ່ເທບຊັ້ນປະຣະນິມມິດຕະວະສະ ວັດດີ ການໄດ້ອັດຕະພາບໃນໝູ່ເທບຊັ້ນພົມມະກາຍິກາ ລວມຄວາມວ່າ ຫວັງ

ຄໍາວ່າ ປຸນນະກະ ຯລຯ ຄວາມເປັນແນວນີ້ ອະທິບາຍວ່າ ຫວັງ ຄື ຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງການບັງເກີດອັດຕະພາບໃນສະຖານເຫຼົ່ານີ້ ຄື ການບັງເກີດອັດຕະ ພາບໃນຕະກູນກະສັດມະຫາສານນີ້ ການບັງເກີດອັດຕະພາບໃນຕະກູນຄະຫະບໍດີມະຫາສານນີ້ ການບັງເກີດອັດຕະພາບໃນໝູ່ເທບຊັ້ນຈາຕຸມະຫາຣາຊິກາເຫຼົ່ານີ້ ການບັງເກີດອັດຕະພາບໃນໝູ່ ເທບຊັ້ນຕາວະຕິງສາເຫຼົ່ານີ້ ຯລຯ ໃນໝູ່ເທບຊັ້ນຍາມາເຫຼົ່ານີ້ ຯລຯ ໃນໝູ່ເທບຊັ້ນດຸສິດເຫຼົ່ານີ້ ຯລຯ ໃນໝູ່ເທບຊັ້ນນິມມານະຣະດີເຫຼົ່ານີ້ ຯລຯ ໃນໝູ່ເທບຊັ້ນປະຣະນິມມິດຕະວະສະວັດດີເຫຼົ່າ ນີ້ ຯລຯ ໃນໝູ່ເທບຊັ້ນພົມມະກາຍິກາເຫຼົ່ານີ້ ລວມຄວາມວ່າ ປຸນນະກະ ຊົນເຫຼົ່ານັ້ນຫວັງຄວາມ ເປັນແນວນີ້

ຄໍາວ່າ ອາໄສຊະຣາຈຶ່ງພາກັນບູຊາຍັນ ອະທິບາຍວ່າ ອາໄສຊະຣາ ຄື ອາໄສພະຍາດ ອາໄສມໍຣະນະ ອາໄສໂສກະ ປະຣິເທວະທຸກຂະໂທມະນັດອຸປາຍາດ

ຊົນເຫຼົ່ານັ້ນ ອາໄສຊາດຈຶ່ງບູຊາຍັນຍ້ອນເຫດໃດ ຊົນເຫຼົ່ານັ້ນ ອາໄສຊະຣາຈຶ່ງບູຊາຍັນຍ້ອນເຫດນັ້ນ

ຊົນເຫຼົ່ານັ້ນ ອາໄສຊະຣາຈຶ່ງບູຊາຍັນຍ້ອນເຫດໃດ ຊົນເຫຼົ່ານັ້ນອາໄສພະຍາທິຈຶ່ງບູຊາຍັນຍ້ອນເຫດນັ້ນ

ຊົນເຫຼົ່ານັ້ນ ອາໄສພະຍາທິຈຶ່ງບູຊາຍັນຍ້ອນເຫດໃດ ຊົນເຫຼົ່ານັ້ນ ອາໄສມໍຣະນະຈຶ່ງບູຊາຍັນຍ້ອນເຫດນັ້ນ

ຊົນເຫຼົ່ານັ້ນ ອາໄສມໍຣະນະ ຈຶ່ງບູຊາຍັນຍ້ອນເຫດໃດ ຊົນເຫຼົ່ານັ້ນອາໄສ ໂສກະປະຣິເທວະ ທຸກຂະ ໂທມະນັດ ອຸປາຍາດ ຈຶ່ງບູຊາຍັນຍ້ອນເຫດນັ້ນ

ຊົນເຫຼົ່ານັ້ນ ອາໄສໂສກະ ປະຣິເທວະ ທຸກຂະ ໂທມະນັດ ອຸປາຍາດ ຈຶ່ງບູຊາຍັນຍ້ອນເຫດໃດ ຊົນເຫຼົ່ານັ້ນອາໄສ ຄະຕິ ຈຶ່ງບູຊາຍັນຍ້ອນເຫດນັ້ນ

ຊົນເຫຼົ່ານັ້ນ ອາໄສຄະຕິ ຈຶ່ງບູຊາຍັນຍ້ອນເຫດໃດ ຊົນເຫຼົ່ານັ້ນອາໄສອຸປະບັດຈຶ່ງບູຊາຍັນຍ້ອນເຫດນັ້ນ

ຊົນເຫຼົ່ານັ້ນ ອາໄສອຸປະບັດຈຶ່ງບູຊາຍັນຍ້ອນເຫດໃດ ຊົນເຫຼົ່ານັ້ນອາໄສປະຕິສົນທິຈຶ່ງບູຊາຍັນຍ້ອນເຫດນັ້ນ

ຊົນເຫຼົ່ານັ້ນ ອາໄສປະຕິສົນທິ ຈຶ່ງບູຊາຍັນຍ້ອນເຫດໃດ ຊົນເຫຼົ່ານັ້ນອາໄສພົບ ຈຶ່ງບູຊາຍັນຍ້ອນເຫດນັ້ນ

ຊົນເຫຼົ່ານັ້ນ ອາໄສ ພົບ ຈຶ່ງບູຊາຍັນຍ້ອນເຫດໃດ ຊົນເຫຼົ່ານັ້ນອາໄສ ສົງສານ ຈຶ່ງບູຊາຍັນຍ້ອນເຫດນັ້ນ

ຊົນເຫຼົ່ານັ້ນອາໄສ ສົງສານ ຈຶ່ງບູຊາຍັນຍ້ອນເຫດໃດ ຊົນເຫຼົ່ານັ້ນອາໄສ ວັດຕະ ຈຶ່ງບູຊາຍັນຍ້ອນເຫດນັ້ນ ຄື ຫວັງ ເຍື່ອໃຍ ເຂົ້າໃກ້ ພົວພັນ ນ້ອມໃຈເຊື່ອ ລວມຄວາມວ່າ ອາໄສຊະຣາ ຈຶ່ງພາກັນບູຊາຍັນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ)

ຣິສີ ມະນຸຊະ ກະສັດ ພາມບາງພວກເຫຼົ່ານີ້
ຈຳນວນຫຼາຍໃນໂລກນີ້ ພາກັນບູຊາຍັນແກ່ເທວະດາທັງຫຼາຍ
ປຸນນະກະ ຊົນເຫຼົ່ານັ້ນຫວັງຄວາມເປັນແນວນີ້
ອາໄສຊະຣາຈຶ່ງພາກັນບູຊາຍັນ

[໑໘] (ທ່ານປຸນນະກະທູນຖາມ ດັ່ງນີ້)

ຣິສີ ມະນຸຊະ ກະສັດ ພາມບາງພວກເຫຼົ່ານີ້
ຈຳນວນຫຼາຍໃນໂລກນີ້ ພາກັນບູຊາຍັນແກ່ເທວະດາທັງຫຼາຍ

ຂ້າແຕ່ພຣະຜູ້ມີພຣະພາກເຈົ້າຜູ້ນິຣະທຸກ
ຊົນເຫຼົ່ານັ້ນ ເປັນຜູ້ບໍ່ຜະໝາດໃນການບູຊາຍັນ
ໄດ້ຂ້າມຊາດແລະຊະຣາໄດ້ແດ່ບໍ

ຂ້າແຕ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດບອກບັນຫານັ້ນ ແກ່ຂ້າພຣະອົງດ້ວຍເທີ້ນ (໓)

ຄຳວ່າ ບາງພວກເຫຼົ່ານີ້ ໃນຄຳວ່າ ຣືສີ ມະນຸຊະ ຯລຯ ບາງພວກເຫຼົ່ານີ້ ອະທິບາຍວ່າ ຯລຯ

ຄຳວ່າ ແດ່ບໍ ໃນຄຳວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຯລຯ ຊົນເຫຼົ່ານັ້ນ ເປັນຜູ້ບໍ່ຜະໝາດໃນການບູຊາຍັນ ຯລຯ ແດ່ບໍ ເປັນຄຳຖາມດ້ວຍຄວາມສົງໄສ ເປັນຄຳຖາມດ້ວຍຄວາມຂ້ອງໃຈ ເປັນຄຳຖາມ ໔ ແງ່ ເປັນຄຳຖາມມີແງ່ມຸມຫຼາຍວ່າ ແນວນີ້ແມ່ນບໍ ບໍ່ແມ່ນແມ່ນບໍ ເປັນອັນໃດນໍ ເປັນແນວໃດນໍ ລວມຄວາມວ່າ ແດ່ບໍ

ຄົນຜູ້ບູຊາຍັນຕັດຮຽກວ່າ ຊົນເຫຼົ່ານັ້ນ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຊົນເຫຼົ່ານັ້ນ ຯລຯ ແດ່ບໍ

ຄຳວ່າ ຜູ້ບໍ່ຜະໝາດໃນການບູຊາຍັນ ອະທິບາຍວ່າ ຍັນນັ້ນຕັດຮຽກວ່າ ທາງແຫ່ງຍັນ ປຽບເໝືອນອະຣິຍະມັກຄະຊື່ວ່າທາງແຫ່ງອະຣິຍະ ເທວະມັກຄະຊື່ວ່າທາງແຫ່ງເທວະ ພົມມັກຄະຊື່ວ່າທາງແຫ່ງພົມ ສັນໃດ ຍັນກໍຊື່ວ່າທາງແຫ່ງຍັນ ສັນນັ້ນຄືກັນ

ຄຳວ່າ ຜູ້ບໍ່ຜະໝາດ ອະທິບາຍວ່າ ຜູ້ບໍ່ຜະໝາດ ຄື ຜູ້ເຮັດໂດຍເອື້ອເຟື້ອ ເຮັດຕິດຕໍ່ເຮັດບໍ່ຢຸດ ປະພຶດບໍ່ຫຍໍ້ຫຍ່ອນ ບໍ່ລະຄວາມພໍໃຈ ບໍ່ຖິ້ມເບົາ ໃນທາງແຫ່ງຍັນ ໄດ້ແກ່ ທ່ຽວໄປເພື່ອຍັນນັ້ນ ຫຼາຍໄປດ້ວຍຍັນນັ້ນ ໜັກໃນຍັນນັ້ນ ເອນໄປທາງຍັນນັ້ນ ໂອນໄປທາງຍັນນັ້ນ ມຸ້ງໄປທາງຍັນນັ້ນ ນ້ອມໃຈໄປທາງຍັນນັ້ນ ມີທາງແຫ່ງຍັນນັ້ນເປັນໃຫຍ່ ລວມຄວາມວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຯລຯ ຊົນເຫຼົ່ານັ້ນ ເປັນຜູ້ບໍ່ຜະໝາດໃນການບູຊາຍັນ

ຊົນແມ່ນເຫຼົ່າໃດສະແຫວງຫາ ຄົ້ນຫາ ເສາະຫາຍັນຄືຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ເຂົ້າ ນ້ຳ ຜ້າ ຍານ ພວງດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ເຄື່ອງປະທີບ ເປັນຜູ້ເຮັດໂດຍເອື້ອເຟື້ອ ເຮັດຕິດຕໍ່ ຯລຯ ມີທາງແຫ່ງຍັນນັ້ນເປັນໃຫຍ່ ຊົນແມ່ນເຫຼົ່ານັ້ນ ຊື່ວ່າບໍ່ຜະໝາດໃນການບູຊາຍັນ

ຊົນແມ່ນເຫຼົ່າໃດປຸງແຕ່ງຍັນ ຄື ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ເຂົ້າ ນ້ຳ ຜ້າ ຍານ ພວງດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ເຄື່ອງປະທີບ ເປັນຜູ້ເຮັດໂດຍເອື້ອເຟື້ອ ຯລຯ ມີທາງແຫ່ງຍັນນັ້ນເປັນໃຫຍ່

ຊົນແມ່ນເຫຼົ່ານັ້ນ ຊື່ວ່າບໍ່ຜະໝາດໃນການບູຊາຍັນ

ຊົນແມ່ນເຫຼົ່າໃດ ໃຫ້ ສະລະ ບໍລິຈາກຍັນ ຄື ຈີວອນ ບິນທະບາດ ເສນາສະນະ ຄິລາ ນະປັດໄຈເພສັດບໍຣິຂານ ເຂົ້າ ນໍ້າ ຜ້າ ຍານ ພວງດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນ ນອນ ບ່ອນພັກ ເຄື່ອງປະທີບ ເປັນຜູ້ເຮັດໂດຍເອື້ອເຟື້ອ ฯລฯ ມີທາງແຫ່ງຍັນນັ້ນເປັນໃຫຍ່ ຊົນ ແມ່ນເຫຼົ່ານັ້ນ ฯລฯ ຊື່ວ່າ ບໍ່ຜະໝາດໃນການບູຊາຍັນ ລວມຄວາມວ່າ ຂ້າແຕ່ພຣະຜູ້ມີພຣະ ພາກເຈົ້າ ฯລฯ ຊົນເຫຼົ່ານັ້ນ ເປັນຜູ້ບໍ່ຜະໝາດໃນການບູຊາຍັນ ฯລฯ ແດ່ບໍ

ຄຳວ່າ ຜູ້ນິຣະທຸກ ฯລฯ ໄດ້ຂ້າມຊາດແລະຊະຣາໄດ້ແດ່ບໍ ອະທິບາຍວ່າ ໄດ້ຂ້າມ ຄື ຂ້າມໄດ້ແລ້ວ ຂ້າມພົ້ນແລ້ວ ກ້າວລ່ວງ ລ່ວງເລີຍຊະຣາ ແລະມໍຣະນະໄດ້ແດ່ບໍ

ຄຳວ່າ ຜູ້ນິຣະທຸກ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາລົບ ຄຳວ່າ ຜູ້ນິຣະທຸກ ນີ້ ເປັນຄຳກ່າວທີ່ມີຄວາມເຄົາລົບ ແລະຄວາມຢຳເກງ ລວມຄວາມວ່າ ຜູ້ນິຣະທຸກ ฯລฯ ໄດ້ຂ້າມຊາດ ແລະຊະຣາແດ່ບໍ

ຄຳວ່າ ຂ້າພຣະອົງທູນຖາມບັນຫານັ້ນ ໃນຄຳວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງທູນຖາມບັນຫານັ້ນ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງ ດ້ວຍເທີ້ນ ອະທິບາຍວ່າ ຂ້າພຣະອົງຂໍທູນຖາມບັນຫານັ້ນ ຄື ທູນຂໍບັນຫານັ້ນ ທູນອັນເຊີນບັນຫານັ້ນ ທູນ ໃຫ້ປະກາດບັນຫານັ້ນ ຂໍໄດ້ໂຜດຕັດບອກບັນຫານັ້ນ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ฯລฯ ຄຳວ່າ ພຣະ ຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ

ຄຳວ່າ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ ອະທິບາຍວ່າ ຂໍ ໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດ ລວມຄວາມວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ ຂໍພຣະອົງໂຜດ ຕັດບອກບັນຫານັ້ນ ແກ່ຂ້າພຣະອົງດ້ວຍເທີ້ນ ດ້ວຍເຫດນັ້ນ ພາມນັ້ນຈຶ່ງທູນຖາມວ່າ

(ທ່ານປຸນນະກະທູນຖາມ ດັ່ງນີ້)

ຣິສີ ມະນຸຊະ ກະສັດ ພາມບາງພວກເຫຼົ່ານີ້
ຈຳນວນຫຼາຍໃນໂລກນີ້ ພາກັນບູຊາຍັນແກ່ເທວະດາທັງຫຼາຍ
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າຜູ້ນິຣະທຸກ
ຊົນເຫຼົ່ານັ້ນເປັນຜູ້ບໍ່ຜະໝາດໃນການບູຊາຍັນ
ໄດ້ຂ້າມຊາດແລະຊະຣາໄດ້ແດ່ບໍ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ
ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ

[໑໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ)

ຊົນເຫຼົ່ານັ້ນຫວັງ ຊື່ນຊົມ ມຸ້ງຫວັງ ຈຶ່ງພາກັນບູຊາຍັນ
ຍ້ອນອາໄສລາບ ຈຶ່ງມຸ້ງຫວັງກາມ
ເຮົາຂໍກ່າວວ່າ ຊົນເຫຼົ່ານັ້ນຜູ້ປະກອບການບູຊາຍັນ
ເປັນຜູ້ກຳໜັດຍິນດີໃນພົບ ຂ້າມຊາດແລະຊະຣາໄປບໍ່ໄດ້ (໔)

ຄຳວ່າ ຫວັງ ໃນຄຳວ່າ ຊົນເຫຼົ່ານັ້ນຫວັງ ຊື່ນຊົມ ມຸ້ງຫວັງຈຶ່ງພາກັນບູຊາຍັນ ອະທິບາຍວ່າ ຫວັງ ຄື ຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍການໄດ້ຮູບ ການໄດ້ສຽງ ການໄດ້ກິ່ນ ການໄດ້ຣົດ ການໄດ້ໂຜດຖັບພະ ການໄດ້ບຸດ ການໄດ້ພັນລະຍາ ການໄດ້ຊັບ ການໄດ້ຍົດ ການໄດ້ຄວາມເປັນໃຫຍ່ ການໄດ້ອັດຕະພາບໃນຕະກູນກະສັດມະຫາສານ ການໄດ້ ອັດຕະພາບໃນຕະກູນພາມມະຫາສານ ຯລຯ ໃນຕະກູນຄະຫະບໍດີມະຫາສານ ການໄດ້ອັດຕະພາບໃນໝູ່ເທບຊັ້ນຈາຕຸມະຫາຣາຊິກາ ຯລຯ ໃນໝູ່ເທບຊັ້ນພົມມະກາຍິກາ ລວມຄວາມວ່າ ຫວັງ

ຄຳວ່າ ຊື່ນຊົມ ໄດ້ແກ່ ຊື່ນຊົມຍັນ ຊື່ນຊົມຜົນ ຫຼື ຊື່ນຊົມບຸກຄົນຜູ້ຄວນແກ່ທັກຂິນາ ຊົນທັງຫຼາຍຊື່ນຊົມຍັນ ເປັນແນວໃດ

ຄື ຊົນທັງຫຼາຍຊື່ນຊົມ ຄື ຍ້ອງຍໍ ພັນລະນາ ສັນເສີນວ່າ ເຮົາໃຫ້ຂອງໜ້າຮັກ ເຮົາໃຫ້ຂອງໜ້າພໍໃຈ ເຮົາໃຫ້ຂອງປະນີດ ເຮົາໃຫ້ຂອງຕາມການເວລາ ເຮົາໃຫ້ຂອງສົມຄວນ ເຮົາເລືອກໃຫ້ ເຮົາໃຫ້ຂອງບໍ່ມີໂທດ ເຮົາໃຫ້ເປັນປະຈຳ ເຮົາເມື່ອກຳລັງໃຫ້ຈິດກໍເຫຼື້ອມໃສ ຊົນທັງຫຼາຍຊື່ນຊົມຍັນ ເປັນແນວນີ້

ຊົນທັງຫຼາຍຊື່ນຊົມຜົນ ເປັນແນວໃດ?

ຄື ຊົນທັງຫຼາຍຊື່ນຊົມ ຄື ຍ້ອງຍໍ ພັນລະນາ ສັນເສີນວ່າ ຍ້ອນຍັນນີ້ເປັນຕົ້ນເຫດຈັກໄດ້ຮູບ ຯລຯ ຈັກໄດ້ສຽງ ຯລຯ ຈັກໄດ້ກິ່ນ ຯລຯ ຈັກໄດ້ຣົດ ຯລຯ ຈັກໄດ້ໂຜດຖັບພະ ຯລຯ ຈັກໄດ້ອັດຕະພາບໃນຕະກູນກະສັດມະຫາສານ ຕະກູນພາມມະນະມະຫາສານ ຯລຯ ໃນໝູ່ເທບຊັ້ນພົມມະກາຍິກາ ຊົນທັງຫຼາຍຊື່ນຊົມຜົນ ເປັນແນວນີ້

ຊົນທັງຫຼາຍຊື່ນຊົມບຸກຄົນຜູ້ຄວນແກ່ທັກຂິນາ ເປັນແນວໃດ?

ຄື ຊົນທັງຫຼາຍຊື່ນຊົມ ຍ້ອງຍໍ ພັນລະນາ ສັນເສີນວ່າ ບຸກຄົນຜູ້ຄວນແກ່ທັກຂິນາ ຄື ບຸກຄົນຜູ້ຄວນແກ່ທັກຂິນາເຖິງພ້ອມດ້ວຍຊາດ ເຖິງພ້ອມດ້ວຍໂຄດ ຊຳນານມົນ ຊົງຈຳມົນໄດ້ຮຽນຈົບໄຕຣເພດ ພ້ອມທັງນິຄັນຖຸສາດ ເກຕຸພະສາດ ອັກສອນສາດ ແລະປະຫວັດສາດ ຮູ້ຕົວບົດ ແລະໄວຍາກອນ ຊຳນານໃນໂລກາຍະຕະສາດ ແລະການທຳນາຍລັກສະນະມະຫາບຸຣຸດ ໗ ເປັນຜູ້ປາສະຈາກຣາຄະ ຫຼື ປະຕິບັດເພື່ອກຳຈັດຣາຄະ ປາສະຈາກໂທສະ ຫຼື ປະຕິບັດເພື່ອກຳຈັດໂທສະ ປາສະຈາກ ໂມຫະ ຫຼື ປະຕິບັດເພື່ອກຳຈັດໂມຫະ ເຖິງພ້ອມດ້ວຍສັດທາ ສີນ

ສະມາທິ ປັນຍາ ວິມຸດຕິ ວິມຸດຕິຍານະທັດສະນະ ຊົນທັງຫຼາຍຜູ້ຄວນແກ່ທັກຂິນາ ເປັນແນວນີ້ ລວມຄວາມວ່າ ຫວັງ ຊື່ນຊົມ

ຄຳວ່າ ມຸ້ງຫວັງ ອະທິບາຍວ່າ ຊົນທັງຫຼາຍ ມຸ້ງຫວັງການໄດ້ຮູບ ມຸ້ງຫວັງການໄດ້ສຽງ ການໄດ້ກິ່ນ ການໄດ້ຣົດ ການໄດ້ໂຜດຖັບພະ ການໄດ້ອັດຕະພາບໃນຕະກູນກະສັດມະຫາສານ ຯລຯ ມຸ້ງຫວັງການໄດ້ອັດຕະພາບໃນໝູ່ເທບຊັ້ນພົມມະກາຍິກາ ລວມຄວາມວ່າ ຫວັງ ຊື່ນຊົມ ມຸ້ງຫວັງ

ຄຳວ່າ ຈຶ່ງພາກັນບູຊາຍັນ ອະທິບາຍວ່າ ຈຶ່ງພາກັນບູຊາຍັນ ຄື ຈຶ່ງພາກັນໃຫ້ ສະລະ ບໍລິຈາກຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານ ເຂົ້າ ນ້ຳ ຜ້າ ຍານ ພວງດອກໄມ້ ຂອງຫອມ ເຄື່ອງລູບໄລ້ ບ່ອນນອນ ບ່ອນພັກ ເຄື່ອງປະທີບ ລວມຄວາມວ່າ ຊົນເຫຼົ່ານັ້ນ ຫວັງ ຊື່ນຊົມ ມຸ້ງຫວັງ ຈຶ່ງພາກັນບູຊາຍັນ

ຄຳວ່າ ປຸນນະກະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ

ຄຳວ່າ ຍ້ອນອາໄສລາບ ຈຶ່ງມຸ້ງຫວັງກາມ ອະທິບາຍວ່າ ຍ້ອນອາໄສການໄດ້ຮູບຈຶ່ງມຸ້ງຫວັງກາມ ຍ້ອນອາໄສການໄດ້ສຽງຈຶ່ງມຸ້ງຫວັງກາມ ຯລຯ ຍ້ອນອາໄສການໄດ້ ອັດຕະພາບໃນໝູ່ເທບຊັ້ນພົມມະກາຍິກາ ຈຶ່ງມຸ້ງຫວັງ ຄື ປາຖະໜາກາມ ລວມຄວາມວ່າ ຍ້ອນອາໄສລາບ ຈຶ່ງມຸ້ງຫວັງກາມ

ຄຳວ່າ ເຮົາຂໍກ່າວວ່າ ຊົນເຫຼົ່ານັ້ນຜູ້ປະກອບການບູຊາຍັນ ເປັນຜູ້ກຳໜັດຍິນດີໃນພົບ ຂ້າມຊາດ ແລະຊະຣາໄປບໍ່ໄດ້ ໄດ້ແກ່ ຜູ້ບູຊາຍັນຕັດຮຽກວ່າ ຊົນເຫຼົ່ານັ້ນ

ຄຳວ່າ ຜູ້ປະກອບການບູຊາຍັນ ໄດ້ແກ່ ຜູ້ປະກອບ ຄື ຜູ້ຂວນຂວາຍ ຝັກໃຝ່ ໃຝ່ໃຈໃນການປະກອບການບູຊາຍັນ ຄື ປະພຶດໃນການບູຊານັ້ນ ຫຼາຍດ້ວຍການບູຊານັ້ນ ໜັກໃນການບູຊານັ້ນ ເອນໄປໃນການບູຊານັ້ນ ໂອນໄປໃນການບູຊານັ້ນ ໂນ້ມໄປໃນການບູຊານັ້ນ ນ້ອມໃຈໄປໃນການບູຊານັ້ນ ມີການບູຊານັ້ນເປັນໃຫຍ່ ລວມຄວາມວ່າ ຊົນເຫຼົ່ານັ້ນ ຜູ້ປະກອບການບູຊາຍັນ

ຄຳວ່າ ເປັນຜູ້ກຳໜັດຍິນດີໃນພົບ ອະທິບາຍວ່າ ຕັນຫາ ຕັດຮຽກວ່າ ຄວາມກຳໜັດໃນພົບ ໄດ້ແກ່ ຄວາມພໍໃຈໃນພົບ ຄວາມກຳໜັດໃນພົບ ຄວາມເພີດເພີນໃນພົບ ຕັນຫາໃນພົບ ຄວາມເຍື່ອໃຍໃນພົບ ຄວາມກະຫາຍໃນພົບ ຄວາມຮ້ອນຮົນໃນພົບ ຄວາມລຸ້ມຫຼົງໃນພົບ ຄວາມມົກມຸ່ນໃນພົບ ໃນພົບທັງຫຼາຍ ຊົນເຫຼົ່ານັ້ນ ກຳໜັດ ຕິດໃຈ ຄັ່ງໄຄ້ ຫຼົງໃຫຼ ມົກມຸ່ນ ຕິດ ຂ້ອງ ພົວພັນໃນພົບທັງຫຼາຍ ດ້ວຍຄວາມກຳໜັດໃນພົບ ລວມຄວາມວ່າ ຊົນເຫຼົ່ານັ້ນຜູ້ປະກອບການບູຊາຍັນ ເປັນຜູ້ກຳໜັດຍິນດີໃນພົບ

ຄຳວ່າ ເຮົາຂໍກ່າວວ່າ ฯລฯ ຂ້າມຊາດແລະຊະຣາໄປບໍ່ໄດ້ ອະທິບາຍວ່າ ເຮົາຂໍກ່າວ ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດວ່າ ຊົນເຫຼົ່ານັ້ນ ຜູ້ ປະກອບການບູຊາຍັນ ກຳໜັດຍິນດີໃນພົບ ຂ້າມບໍ່ໄດ້ ຄື ຂ້າມໄປບໍ່ໄດ້ ຂ້າມພົ້ນບໍ່ໄດ້ ກ້າວ ລ່ວງບໍ່ໄດ້ ລ່ວງເລີຍຊາດຊະຣາ ແລະມໍຣະນະໄປບໍ່ໄດ້ ຄື ບໍ່ອອກ ບໍ່ສະລັດອອກ ກ້າວບໍ່ພົ້ນ ບໍ່ ກ້າວລ່ວງ ບໍ່ລ່ວງເລີຍຊາດຊະຣາແລະມໍຣະນະ ໝຸນວົນຢູ່ພາຍໃນຊາດຊະຣາແລະມໍຣະນະ ພາຍ ໃນຫົນທາງແຫ່ງສົງສານ ຄື ໄປຕາມຊາດ ຊະຣາຕິດຕາມ ພະຍາທິຄອບງຳ ມໍຣະນະຍ່ຳຍີ ບໍ່ມີ ບ່ອນຕ້ານທານ ບໍ່ມີບ່ອນຫຼົບຫຼີກ ບໍ່ມີບ່ອນເພິ່ງ ບໍ່ມີບ່ອນອາໄສ ລວມຄວາມວ່າ ເຮົາຂໍກ່າວວ່າ ຊົນເຫຼົ່ານັ້ນຜູ້ປະກອບການບູຊາຍັນ ເປັນຜູ້ກຳໜັດຍິນດີໃນພົບ ຂ້າມຊາດແລະຊະຣາໄປບໍ່ໄດ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ)

ຊົນເຫຼົ່ານັ້ນຫວັງ ຊື່ນຊົມ ມຸ້ງຫວັງ ຈຶ່ງພາກັນບູຊາຍັນ
ຍ້ອນອາໄສລາບ ຈຶ່ງມຸ້ງຫວັງກາມ
ເຮົາຂໍກ່າວວ່າ ຊົນເຫຼົ່ານັ້ນຜູ້ປະກອບການບູຊາຍັນ
ເປັນຜູ້ກຳໜັດຍິນດີໃນພົບ ຂ້າມຊາດແລະຊະຣາໄປບໍ່ໄດ້

[໑໙] (ທ່ານປຸນນະກະທູນຖາມ ດັ່ງນີ້)

ຂ້າແຕ່ພຣະອົງຜູ້ນິຣະທຸກ
ຖ້າຊົນເຫຼົ່ານັ້ນ ຜູ້ປະກອບການບູຊາຍັນ
ຂ້າມຊາດແລະຊະຣາໄປບໍ່ໄດ້ດ້ວຍຍັນທັງຫຼາຍ
ຂ້າແຕ່ພຣະອົງຜູ້ນິຣະທຸກ ເມື່ອເປັນເຊັ່ນນີ້
ໃຜນໍ ໃນເທວະໂລກແລະມະນຸດໂລກ ຂ້າມຊາດແລະຊະຣາໄດ້
ຂ້າແຕ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ (໕)

ຄຳວ່າ ຖ້າຊົນເຫຼົ່ານັ້ນ ຜູ້ປະກອບການບູຊາຍັນ ຂ້າມ ฯລฯ ໄປບໍ່ໄດ້ ອະທິບາຍວ່າ ຊົນເຫຼົ່ານັ້ນຜູ້ບູຊາຍັນ ຜູ້ປະກອບການບູຊາຍັນ ເປັນຜູ້ກຳໜັດຍິນດີໃນພົບຂ້າມບໍ່ໄດ້ ຄື ຂ້າມໄປ ບໍ່ໄດ້ ຂ້າມພົ້ນບໍ່ໄດ້ ກ້າວລ່ວງບໍ່ໄດ້ ລ່ວງເລີຍຊາດຊະຣາ ແລະມໍຣະນະໄປບໍ່ໄດ້ ໄດ້ແກ່ ບໍ່ ອອກ ບໍ່ສະລັດອອກ ກ້າວບໍ່ພົ້ນ ບໍ່ກ້າວລ່ວງ ບໍ່ລ່ວງເລີຍຈາກຊາດຊະຣາແລະມໍຣະນະ ຄື ໝຸນ ວົນຢູ່ພາຍໃນຊາດຊະຣາ ແລະມໍຣະນະ ພາຍໃນຫົນທາງແຫ່ງສົງສານ ຄື ໄປຕາມຊາດ ຊະຣາ ຕິດຕາມ ພະຍາທິຄອບງຳ ມໍຣະນະຍ່ຳຍີ ບໍ່ມີບ່ອນຕ້ານທານ ບໍ່ມີບ່ອນຫຼົບຫຼີກ ບໍ່ມີບ່ອນເພິ່ງ ບໍ່ ມີບ່ອນອາໄສ ລວມຄວາມວ່າ ຖ້າຊົນເຫຼົ່ານັ້ນ ຜູ້ປະກອບການບູຊາຍັນ ຂ້າມ ฯລฯ ໄປບໍ່ໄດ້

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານປຸນນະກະທູນຖາມ ດັ່ງນີ້ ເປັນບົດສົນທິ ຯລຯ

ຄຳວ່າ ດ້ວຍຍັນທັງຫຼາຍ ໃນຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ຯລຯ ຂ້າມຊາດແລະຊະຣາໄປບໍ່ໄດ້ດ້ວຍຍັນທັງຫຼາຍ ໄດ້ແກ່ ດ້ວຍຍັນເປັນຈຳນວນຫຼາຍ ດ້ວຍຍັນຊະນິດຕ່າງ ໆ ດ້ວຍຍັນທັງຫຼາຍ

ຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາລົບ ຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ນີ້ ເປັນຄຳກ່າວທີ່ມີຄວາມເຄົາລົບ ແລະຄວາມຢຳເກງ ລວມຄວາມວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ຯລຯ ຂ້າມຊາດ ແລະຊະຣາໄປບໍ່ໄດ້ດ້ວຍຍັນທັງຫຼາຍ

ຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ເມື່ອເປັນເຊັ່ນນີ້ ໃຜບໍ ໃນເທວະໂລກ ແລະມະນຸດໂລກ ຂ້າມຊາດ ແລະຊະຣາໄດ້ ອະທິບາຍວ່າ ເມື່ອເປັນເຊັ່ນນີ້ ໃຜບໍ ໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງເທວະດາແລະມະນຸດ ຂ້າມໄດ້ ຄື ຂ້າມໄປໄດ້ ຂ້າມພົ້ນໄປໄດ້ ກ້າວລ່ວງໄປໄດ້ ລ່ວງເລີຍຊາດຊະຣາແລະມໍຣະນະໄປໄດ້

ຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາລົບ ຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ນີ້ເປັນຄຳກ່າວທີ່ມີຄວາມເຄົາລົບ ແລະຄວາມຢຳເກງ

ຄຳວ່າ ຂ້າພຣະອົງຂໍທູນຖາມບັນຫານັ້ນ ໃນຄຳວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ ອະທິບາຍວ່າ ຂ້າພຣະອົງຂໍທູນຖາມບັນຫານັ້ນ ຄື ທູນຂໍບັນຫານັ້ນ ທູນອັນເຊີນບັນຫານັ້ນ ທູນໃຫ້ຊົງປະກາດບັນຫານັ້ນ ຂໍພຣະອົງໂຜດຕັດບອກບັນຫານັ້ນດ້ວຍເທີ້ນ ລວມຄວາມວ່າ ຂ້າພຣະອົງຂໍທູນຖາມບັນຫານັ້ນ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ

ຄຳວ່າ ຂໍພຣະອົງໂຜດຕັດບອກບັນຫານັ້ນດ້ວຍເທີ້ນ ອະທິບາຍວ່າ ຂໍພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດດ້ວຍເທີ້ນ ລວມຄວາມວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງ ຂໍທູນຖາມບັນຫານັ້ນ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ ດ້ວຍເຫດນັ້ນ ພາມນັ້ນຈຶ່ງທູນ ຖາມວ່າ

(ທ່ານປຸນນະກະທູນຖາມ ດັ່ງນີ້)

ຂ້າແຕ່ ພຣະອົງຜູ້ນິຣະທຸກ
ຖ້າຊົນເຫຼົ່ານັ້ນ ຜູ້ປະກອບການບູຊາຍັນ
ຂ້າມຊາດແລະຊະຣາໄປບໍ່ໄດ້ດ້ວຍຍັນທັງຫຼາຍ
ຂ້າແຕ່ພຣະອົງຜູ້ນິຣະທຸກ ເມື່ອເປັນເຊັ່ນນີ້
ໃຜບໍ ໃນເທວະໂລກແລະມະນຸດໂລກ ຂ້າມຊາດແລະຊະຣາໄດ້

ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ

[໑໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ)

ເຮົາກ່າວວ່າ ບຸກຄົນໃດບໍ່ມີຄວາມຫວັ່ນໄຫວໃນໂລກໃດ
ຍ້ອນຮູ້ແຈ້ງຝັ່ງນີ້ແລະຝັ່ງນັ້ນໃນໂລກ
ບຸກຄົນນັ້ນເປັນຜູ້ສະງົບ ປາສະຈາກຄວັນ ບໍ່ມີທຸກ
ບໍ່ມີຄວາມຫວັງ ຊື່ວ່າຂ້າມຊາດແລະຊະຣາໄດ້ແລ້ວ (໖)

ຄຳວ່າ ຍ້ອນຮູ້ແຈ້ງຝັ່ງນີ້ແລະຝັ່ງນັ້ນໃນໂລກ ອະທິບາຍວ່າ ຍານ ຕັດຮຽກວ່າ ສັງຂາ ໄດ້ແກ່ ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມເລືອກເຟັ້ນທຳ ສຳມາທິດຖິ

## ວ່າດ້ວຍຝັ່ງນີ້ແລະຝັ່ງນັ້ນ

ຄຳວ່າ ຝັ່ງນີ້ແລະຝັ່ງນັ້ນ ອະທິບາຍວ່າ
ອັດຕະພາບຂອງຕົນ ຕັດຮຽກວ່າ ຝັ່ງນີ້
ອັດຕະພາບຂອງຜູ້ອື່ນ ຕັດຮຽກວ່າ ຝັ່ງນັ້ນ
ຮູບ ເວທະນາ ສັນຍາ ສັງຂານ ແລະວິນຍານຂອງຕົນ ຕັດຮຽກວ່າ ຝັ່ງນີ້
ຮູບ ເວທະນາ ສັນຍາ ສັງຂານ ແລະວິນຍານຂອງຜູ້ອື່ນ ຕັດຮຽກວ່າ ຝັ່ງນັ້ນ
ອາຍະຕະນະພາຍໃນ ໖ ຕັດຮຽກວ່າ ຝັ່ງນີ້
ອາຍະຕະນະພາຍນອກ ໖ ຕັດຮຽກວ່າ ຝັ່ງນັ້ນ
ມະນຸດໂລກ ຕັດຮຽກວ່າ ຝັ່ງນີ້ ເທວະໂລກ ຕັດຮຽກວ່າ ຝັ່ງນັ້ນ
ກາມທາດ ຕັດຮຽກວ່າ ຝັ່ງນີ້ ຮູບທາດ ອະຮູບທາດ ຕັດຮຽກວ່າ ຝັ່ງນັ້ນ
ກາມທາດ ຮູບທາດ ຕັດຮຽກວ່າ ຝັ່ງນີ້ ອະຮູບທາດ ຕັດຮຽກວ່າ ຝັ່ງນັ້ນ

ຄຳວ່າ ຍ້ອນຮູ້ແຈ້ງຝັ່ງນີ້ ແລະຝັ່ງນັ້ນໃນໂລກ ອະທິບາຍວ່າ ຍ້ອນຮູ້ແຈ້ງ ຄື ຍ້ອນຮູ້ ຮູ້ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງຝັ່ງນີ້ແລະຝັ່ງນັ້ນ ໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ຯລຯ ເປັນໂຣກຯລຯ ເປັນເໝືອນຫົວຝີ ຯລຯ ເປັນເໝືອນລູກສອນ ຯລຯ ເປັນຂອງທີ່ຕ້ອງສະລັດອອກໄປ ລວມຄວາມວ່າ ຍ້ອນຮູ້ແຈ້ງຝັ່ງນີ້ ແລະຝັ່ງນັ້ນໃນໂລກ

ຄຳວ່າ ປຸນນະກະ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ฯລฯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ฯລฯ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ

ຄຳວ່າ ບຸກຄົນໃດ ໃນຄຳວ່າ ບຸກຄົນໃດບໍ່ມີຄວາມຫວັ່ນໄຫວໃນໂລກໃດ ໆ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ຄວາມຫວັ່ນໄຫວ ໄດ້ແກ່ ຄວາມຫວັ່ນໄຫວຍ້ອນຕັນຫາ ຄວາມຫວັ່ນໄຫວຍ້ອນທິດຖິ ຄວາມຫວັ່ນໄຫວຍ້ອນມານະ ຄວາມຫວັ່ນໄຫວຍ້ອນກິເລດ ຄວາມຫວັ່ນໄຫວຍ້ອນກາມ ຄວາມຫວັ່ນໄຫວເຫຼົ່ານີ້ ບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ແກ່ບຸກຄົນໃດ ໄດ້ແກ່ ທ່ານລະໄດ້ແລ້ວ ຕັດຂາດແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ

ຄຳວ່າ ໃດ ໄດ້ແກ່ ບ່ອນໃດ ພາຍໃນ ພາຍນອກ ຫຼື ທັງພາຍໃນແລະພາຍນອກ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ฯລฯ ອາຍະຕະນະໂລກ ລວມຄວາມວ່າ ບຸກຄົນໃດ ບໍ່ມີຄວາມຫວັ່ນໄຫວໃນໂລກໃດ

## ວ່າດ້ວຍຜູ້ສະງົບ ປາສະຈາກຄວັນ

ຄຳວ່າ ເປັນຜູ້ສະງົບ ໃນຄຳວ່າ ເຮົາກ່າວວ່າ ฯລฯ ບຸກຄົນນັ້ນເປັນຜູ້ສະງົບ ປາສະຈາກຄວັນ ບໍ່ມີທຸກ ບໍ່ມີຄວາມຫວັງ ຊື່ວ່າຂ້າມຊາດ ແລະຊະຣາໄດ້ແລ້ວ ອະທິບາຍວ່າ

ຊື່ວ່າ ເປັນຜູ້ສະງົບ ຍ້ອນສະງົບຣາຄະ

ຊື່ວ່າ ເປັນຜູ້ສະງົບ ຍ້ອນສະງົບໂທສະ

ຊື່ວ່າ ເປັນຜູ້ສະງົບ ຍ້ອນສະງົບໂມຫະ

ຄື ເປັນຜູ້ສະງົບແລ້ວ ເຂົ້າໄປສະງົບແລ້ວ ສະງົບເຢັນແລ້ວ ດັບແລ້ວ ຣະງັບແລ້ວ ຍ້ອນສະງົບ ຣະງັບ ສະງົບເຢັນ ເຜົາ ດັບ ປາສະຈາກ ສະງົບຣະງັບໂກທະ ฯລฯ ອຸປະນາຫະ ฯລฯ ມັກຂະ ฯລฯ ປະລາສະ ฯລฯ ອິດສາ ฯລฯ ມັດສະຣິຍະ ฯລฯ ມາຍາ ฯລฯ ສາເຖີຍຍະฯລฯ ຖຳພະ ฯລฯ ສາຣຳພະ ฯລฯ ມານະ ฯລฯ ອະຕິມານະ ฯລฯ ມະທະ ฯລฯ ປະມາທະ ฯລฯ ກິເລດທຸກຊະນິດ ฯລฯ ທຸດຈະຣິດທຸກທາງ ฯລฯ ຄວາມກະວົນກະວາຍທຸກຢ່າງ ฯລฯ ຄວາມຮ້ອນຮົນທຸກສະຖານ ฯລฯ ຄວາມເດືອດຮ້ອນທຸກປະການ ฯລฯ ອະກຸສະລາພິສັງຂານທຸກປະເພດ ລວມຄວາມວ່າ ເປັນຜູ້ສະງົບ

ຄຳວ່າ ປາສະຈາກຄວັນ ອະທິບາຍວ່າ ກາຍທຸດຈະຣິດ ພຣະອະຣະຫັນຕະຂີນາສົບກຳຈັດໄດ້ແລ້ວ ຄື ກຳຈັດ ເຮັດໃຫ້ແຫ້ງ ເຮັດໃຫ້ເຫືອດແຫ້ງ ເຮັດໃຫ້ໝົດສິ້ນໄປໄດ້ແລ້ວວະຈີທຸດຈະຣິດ ມະໂນທຸດຈະຣິດ ພຣະອະຣະຫັນຕະຂີນາສົບກຳຈັດໄດ້ແລ້ວ ຄື ກຳຈັດ ເຮັດໃຫ້ແຫ້ງ ເຮັດໃຫ້ເຫືອດແຫ້ງ ເຮັດໃຫ້ໝົດສິ້ນໄປໄດ້ແລ້ວ

ຣາຄະ ຯລຯ ໂທສະ ຯລຯ ໂມຫະ ພຣະອະຣະຫັນຕະຂີນາສົບກຳຈັດໄດ້ແລ້ວ ກຳຈັດເຮັດໃຫ້ແຫ້ງ ເຮັດໃຫ້ເຫືອດແຫ້ງ ເຮັດໃຫ້ໝົດສິ້ນໄປໄດ້ແລ້ວ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ອິດສາ ຯລຯ ມັດສະຣິຍະ ຯລຯ ມາຍາ ຯລຯ ສາເຖີຍຍະ ຯລຯ ຖໍາພະ ຯລຯ ສາຣໍາພະ ຯລຯ ມານະ ຯລຯ ອະຕິມານະ ຯລຯ ມະທະ ຯລຯ ປະມາທະ ຯລຯ ກິເລດທຸກຊະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ຯລຯ ອະກຸສະລາພິສັງຂານທຸກປະເພດ ພຣະອະຣະຫັນຕະຂີນາສົບກຳຈັດໄດ້ແລ້ວ ຄື ກຳຈັດ ເຮັດໃຫ້ແຫ້ງ ເຮັດໃຫ້ເຫືອດແຫ້ງ ເຮັດໃຫ້ໝົດສິ້ນໄປໄດ້ແລ້ວ

ອີກໄນໜຶ່ງ ຄວັນ ຕັດຮຽກວ່າຄວາມໂກດ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

ພານ ທ່ານມີມານະເປັນເຄື່ອງຫາບ
ມີຄວາມໂກດເປັນຄວັນ ມີຄວາມເປັນຄົນເວົ້າຕົວະເປັນຂີ້ເຖົ່າ
ມີລີ້ນເປັນຈອງ ມີຫົວໃຈເປັນບ່ອນບູຊາໄຟ
ຕົນທີ່ຝຶກດີແລ້ວເປັນຄວາມຮຸ່ງເຮືອງຂອງບຸຣຸດ

## ວ່າດ້ວຍເຫດເກີດແຫ່ງຄວາມໂກດ ໑໐

ອີກໄນໜຶ່ງ ຄວາມໂກດຍ່ອມເກີດຍ້ອນເຫດ ໑໐ ຢ່າງ ຄື

໑. ຍ້ອນສຳຄັນວ່າ ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ
໒. ຍ້ອນສຳຄັນວ່າ ຜູ້ນີ້ກຳລັງເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ
໓. ຍ້ອນສຳຄັນວ່າ ຜູ້ນີ້ຈັກເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ
໔. ຯລຯ ຜູ້ນີ້ໄດ້ເຮັດ ສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ບໍ່ມັກຂອງເຮົາ
໕. ຯລຯ ຜູ້ນີ້ກຳລັງເຮັດ ສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ບໍ່ມັກຂອງເຮົາ
໖. ຯລຯ ຜູ້ນີ້ຈັກເຮັດ ສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ບໍ່ມັກຂອງເຮົາ
໗. ຯລຯ ຜູ້ນີ້ໄດ້ເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ບໍ່ມັກຂອງເຮົາ
໘. ຯລຯ ຜູ້ນີ້ກຳລັງເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ບໍ່ມັກຂອງເຮົາ
໙. ຯລຯ ຜູ້ນີ້ຈັກເຮັດ ສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ບໍ່ມັກຂອງເຮົາ
໑໐. ຄວາມໂກດເກີດຂຶ້ນໃນຖານະອັນບໍ່ສົມຄວນ

ໃຈປອງຮ້າຍ ມຸ້ງຮ້າຍ ຂັດເຄືອງ ຂຸ່ນເຄືອງ ເຄືອງ ເຄືອງຫຼາຍ ເຄືອງຕະຫຼອດ ຊັງ ຊີງຊັງ ກຽດຊັງ ໃຈພະຍາບາດ ໃຈແຄ້ນເຄືອງ ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ຄວາມ

ຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມໂກດ ຄວາມແຄ້ນ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມບໍ່ແຊ່ມຊື່ນແຫ່ງຈິດເຫັນປານນີ້ ນີ້ຕັດຮຽກວ່າ ຄວາມໂກດ

ອີກໄນໜຶ່ງ ເພິ່ງຮູ້ຄວາມໂກດຫຼາຍ ຄວາມໂກດໜ້ອຍ ບາງເທື່ອຄວາມໂກດພຽງເຮັດໃຫ້ໃຈຂຸ່ນມົວ ຍັງບໍ່ເຖິງກັບໜ້າເງົ້າໜ້າງໍກໍມີ ບາງເທື່ອຄວາມໂກດພຽງເຮັດໃຫ້ໜ້າເງົ້າໜ້າງໍ ແຕ່ຍັງບໍ່ເຖິງກັບຄາງສັ່ນກໍມີ ບາງເທື່ອຄວາມໂກດພຽງເຮັດໃຫ້ຄາງສັ່ນ ແຕ່ຍັງບໍ່ເຖິງກັບເວົ້າຄຳຫຍາບກໍມີ ບາງເທື່ອຄວາມໂກດພຽງເຮັດໃຫ້ເວົ້າຄຳຫຍາບ ແຕ່ຍັງບໍ່ເຖິງກັບຕາຂວາງແນມເບິ່ງທິດແນມເບິ່ງທາງກໍມີ ບາງເທື່ອຄວາມໂກດພຽງເຮັດໃຫ້ຕາຂວາງແນມເບິ່ງທິດແນມເບິ່ງທາງ ແຕ່ຍັງບໍ່ເຖິງກັບຈັບໄມ້ຈັບມີດກໍມີ ບາງເທື່ອຄວາມໂກດພຽງເຮັດໃຫ້ຈັບໄມ້

ຈັບມີດ ແຕ່ຍັງບໍ່ເຖິງກັບເງື້ອດເງື້ອໄມ້ແລະມີດ (ທີ່ຖືໄວ້) ກໍມີ ບາງເທື່ອຄວາມໂກດພຽງແຕ່ເຮັດໃຫ້ເງື້ອດເງື້ອໄມ້ແລະມີດ ແຕ່ຍັງບໍ່ເຖິງກັບລົງມືຟາດຟັນກໍມີ ບາງເທື່ອຄວາມໂກດພຽງແຕ່ຟາດຟັນ ແຕ່ຍັງບໍ່ເຖິງກັບເຮັດໃຫ້ເກີດບາດແຜກໍມີ ບາງເທື່ອຄວາມໂກດພຽງແຕ່ເຮັດໃຫ້ເກີດບາດແຜ ແຕ່ຍັງບໍ່ເຖິງກັບເຮັດໃຫ້ກະດູກຫັກກໍມີ ບາງເທື່ອຄວາມໂກດພຽງແຕ່ເຮັດໃຫ້ກະດູກຫັກ ແຕ່ຍັງບໍ່ເຖິງກັບເຮັດໃຫ້ອະໄວຍະວະຂາດຫຼຸດໄປກໍມີ ບາງເທື່ອຄວາມໂກດພຽງແຕ່ເຮັດໃຫ້ອະໄວຍະວະຂາດຫຼຸດໄປ ແຕ່ຍັງບໍ່ເຖິງກັບເຮັດໃຫ້ເສຍຊີວິດກໍມີ ບາງເທື່ອຄວາມໂກດພຽງແຕ່ເຮັດໃຫ້ຜູ້ອື່ນເສຍຊີວິດ ແຕ່ຍັງບໍ່ເຖິງກັບເຮັດໃຫ້ດຳຣົງຢູ່ເພື່ອຂ້າຕົນເອງກໍມີ ເມື່ອໃດ ຄວາມໂກດເຮັດໃຫ້ຂ້າບຸກຄົນອື່ນແລ້ວຂ້າຕົນເອງດ້ວຍ ເມື່ອນັ້ນ ຄວາມໂກດເປັນໄປຮຸນແຮງຫຼາຍ ເຖິງຄວາມເປັນສິ່ງຮ້າຍແຮງຢ່າງຍິ່ງ ຄວາມໂກດນັ້ນ ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຕັດຮຽກວ່າ ປາສະຈາກຄວັນ ຊື່ວ່າ ປາສະຈາກຄວັນ ຍ້ອນເປັນຜູ້ລະຄວາມໂກດໄດ້ແລ້ວ ຊື່ວ່າປາສະຈາກຄວັນ ຍ້ອນເປັນຜູ້ກຳນົດຮູ້ບ່ອນຕັ້ງແຫ່ງຄວາມໂກດໄດ້ແລ້ວ ຊື່ວ່າປາສະຈາກຄວັນ ຍ້ອນເປັນຜູ້ເຂົ້າໄປຕັດເຫດແຫ່ງຄວາມໂກດໄດ້ແລ້ວ

ຄຳວ່າ ບໍ່ມີທຸກ ອະທິບາຍວ່າ ຣາຄະເປັນທຸກ ໂທສະ ໂມຫະ ໂກທະ ອຸປະນາຫະ ຯລຯ ອະກຸສະລາພິສັງຂານທຸກປະເພດເປັນທຸກ ຄວາມທຸກເຫຼົ່ານີ້ຜູ້ໃດລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຕັດຮຽກວ່າ ບໍ່ມີທຸກ

ຄຳວ່າ ບໍ່ມີຄວາມຫວັງ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມຫວັງ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ ຄວາມຫວັງ ຄື ຕັນຫາເຫຼົ່ານີ້ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຕັດຮຽກວ່າ ບໍ່ມີຄວາມຫວັງ

ຄຳວ່າ ຊາດ ໄດ້ແກ່ ການເກີດ ຄື ການເກີດຂຶ້ນ ການກ້າວລົງ (ສູ່ທ້ອງ) ການບັງເກີດ ການບັງເກີດຂຶ້ນ ຄວາມຜາກົດແຫ່ງຂັນທັງຫຼາຍ ການໄດ້ອາຍະຕະນະໃນໝູ່ສັດ ນັ້ນ ໆ ຂອງ ສັດເຫຼົ່ານັ້ນ ໆ

ຄຳວ່າ ຊະຣາ ໄດ້ແກ່ ຄວາມແກ່ ຄື ຄວາມຊຸດໂຊມ ຄວາມເປັນຜູ້ມີແຂ້ວຫຼ່ອນ ຄວາມ ເປັນຜູ້ມີຜົມຫງອກ ຄວາມເປັນຜູ້ມີໜັງຫ່ຽວ ຄວາມເສື່ອມອາຍຸ ຄວາມແກ່ຫງ່ອມແຫ່ງອິນຊີທັງ ຫຼາຍໃນໝູ່ສັດນັ້ນ ໆ ຂອງສັດເຫຼົ່ານັ້ນ ໆ

ຄຳວ່າ ເຮົາກ່າວວ່າ ຯລຯ ບຸກຄົນນັ້ນເປັນຜູ້ສະງົບ ປາສະຈາກຄວັນ ບໍ່ມີທຸກ ບໍ່ມີຄວາມ ຫວັງ ຊື່ວ່າຂ້າມຊາດ ແລະຊະຣາໄດ້ແລ້ວ ອະທິບາຍວ່າ ເຮົາກ່າວ ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດວ່າ ເປັນຜູ້ສະງົບ ປາສະຈາກຄວັນ ບໍ່ມີທຸກ ບໍ່ ມີຄວາມຫວັງ ຂ້າມໄດ້ ຄື ຂ້າມໄປໄດ້ ຂ້າມພົ້ນໄປໄດ້ ກ້າວລ່ວງໄປໄດ້ ລ່ວງເລີຍຊາດຊະຣາ ມໍຣະນະໄປໄດ້ ລວມຄວາມວ່າ ເຮົາກ່າວວ່າ ຯລຯ ບຸກຄົນນັ້ນເປັນຜູ້ສະງົບ ປາສະຈາກຄວັນ ບໍ່ ມີທຸກ ບໍ່ມີຄວາມຫວັງ ຊື່ວ່າຂ້າມຊາດ ແລະຊະຣາໄດ້ແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກ ເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນະກະ)

ເຮົາກ່າວວ່າ ບຸກຄົນໃດບໍ່ມີຄວາມຫວັ່ນໄຫວໃນໂລກໃດ
ຍ້ອນຮູ້ແຈ້ງຝັ່ງນີ້ແລະຝັ່ງນັ້ນໃນໂລກ
ບຸກຄົນນັ້ນເປັນຜູ້ສະງົບ ປາສະຈາກຄວັນ ບໍ່ມີທຸກ
ບໍ່ມີຄວາມຫວັງ ຊື່ວ່າຂ້າມຊາດແລະຊະຣາໄດ້ແລ້ວ
ພ້ອມກັບການຈົບຄາຖາ ຯລຯ

ປຸນນະກະມານພປະຄອງອັນຊະລີ ນັ່ງລົງນະມັດສະການພຣະຜູ້ມີພຣະພາກເຈົ້າໂດຍປະ ກາດວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພ ຣະອົງເປັນສາວົກ

**ປຸນນະກະມານະວະປັນຫານິດເທດທີ ໓ ຈົບ**

# ໔. ເມດຕະຄູມານະວະປັນຫານິດເທດ

## ວ່າດ້ວຍປັນຫາຂອງເມດຕະຄູມານົບ

[໑໗] (ທ່ານເມດຕະຄູທູນຖາມ ດັ່ງນີ້)

ຂ້າແຕ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ
ຂ້າພຣະອົງຍ່ອມສຳຄັນພຣະອົງວ່າ ຊົງເປັນຜູ້ຈົບເວດ
ຊົງອົບຮົມພຣະອົງແລ້ວ ທຸກຫຼາຍຮູບແບບອັນໃດກໍຕາມໃນໂລກ
ທຸກເຫຼົ່ານີ້ເກີດມາຈາກບ່ອນໃດນໍ (໑)

## ວ່າດ້ວຍການຖາມ ໓

ຄຳວ່າ ຂໍທູນຖາມ ໃນຄຳວ່າ ຂ້າແຕ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນໄດ້ແກ່ ການຖາມ ໓ ຢ່າງ ຄື

໑. ການຖາມເພື່ອ ເຮັດໃຫ້ຊັດເຈນໃນສິ່ງທີ່ຍັງບໍ່ເຄີຍເຫັນ
໒. ການຖາມເພື່ອ ທຽບຄຽງໃນສິ່ງທີ່ເຄີຍເຫັນແລ້ວ
໓. ການຖາມເພື່ອ ຕັດຄວາມສົງໄສ

ການຖາມເພື່ອເຮັດໃຫ້ຊັດເຈນໃນສິ່ງທີ່ຍັງບໍ່ເຄີຍເຫັນ ເປັນແນວໃດ?

ຄື ໂດຍປົກກະຕິລັກສະນະໃດ ຕົນຍັງບໍ່ຮູ້ ຍັງບໍ່ເຫັນ ຍັງບໍ່ໄດ້ທຽບຄຽງ ຍັງບໍ່ໄດ້ພິຈາລະນາ ຍັງບໍ່ໄດ້ເຮັດໃຫ້ກະຈ່າງ ຍັງບໍ່ໄດ້ເຮັດໃຫ້ຊັດແຈ້ງ ກໍຖາມບັນຫາເພື່ອຮູ້ ເພື່ອເຫັນ ເພື່ອທຽບຄຽງ ເພື່ອພິຈາລະນາ ເພື່ອເຮັດໃຫ້ລັກສະນະນັ້ນຊັດແຈ້ງ ນີ້ຊື່ວ່າການຖາມເພື່ອເຮັດໃຫ້ຊັດເຈນໃນສິ່ງທີ່ຍັງບໍ່ເຄີຍເຫັນ

ການຖາມເພື່ອທຽບຄຽງໃນສິ່ງທີ່ເຄີຍເຫັນແລ້ວ ເປັນແນວໃດ?

ຄື ໂດຍປົກກະຕິລັກສະນະໃດ ຕົນຮູ້ ເຫັນ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວ ກໍຖາມບັນຫາ ເພື່ອທຽບຄຽງລັກສະນະນັ້ນກັບບັນດິດອື່ນ ນີ້ຊື່ວ່າການຖາມເພື່ອທຽບຄຽງໃນສິ່ງທີ່ເຄີຍເຫັນແລ້ວ

ການຖາມເພື່ອຕັດຄວາມສົງໄສ ເປັນແນວໃດ?

ຄື ໂດຍປົກກະຕິບຸກຄົນເປັນຜູ້ແລ່ນໄປສູ່ຄວາມສົງໄສ ແລ່ນໄປສູ່ຄວາມເຄືອບແຄງ ເກີດຄວາມຄິດເປັນສອງແງ່ວ່າ ເປັນແນວນີ້ບໍ່ນໍ ເປັນອັນໃດນໍ ເປັນແນວໃດນໍ ເຂົາກໍຖາມບັນຫາເພື່ອຕັດຄວາມສົງໄສ ນີ້ຊື່ວ່າການຖາມເພື່ອຕັດຄວາມສົງໄສ ເຫຼົ່ານີ້ຊື່ວ່າການຖາມ ໕ ຢ່າງ

ການຖາມອີກ ໓ ຢ່າງ ຄື

໑. ການຖາມຂອງມະນຸດ
໒. ການຖາມຂອງອະມະນຸດ
໓. ການຖາມຂອງຮູບເນຣະມິດ

ການຖາມຂອງມະນຸດ ເປັນແນວໃດ?

ຄື ພວກມະນຸດເຂົ້າເຝົ້າພຣະຜູ້ມີພຣະພາກພຸດທະເຈົ້າແລ້ວ ທູນຖາມບັນຫາ ຄື ພວກພິກຂຸກໍທູນຖາມ ພິກຂຸນີກໍທູນຖາມ ອຸປາສົກກໍທູນຖາມ ອຸປາສິກາກໍທູນຖາມ ພຣະຣາຊາກໍທູນຖາມ ກະສັດກໍທູນຖາມ ພາມກໍທູນຖາມ ແພດກໍທູນຖາມ ສູດກໍທູນຖາມ ຄະລືຫັດກໍທູນຖາມ ບັນພະຊິດກໍທູນຖາມ ນີ້ຊື່ວ່າການຖາມຂອງມະນຸດ

ການຖາມຂອງອະມະນຸດ ເປັນແນວໃດ?

ຄື ພວກອະມະນຸດເຂົ້າເຝົ້າພຣະຜູ້ມີພຣະພາກພຸດທະເຈົ້າແລ້ວ ທູນຖາມບັນຫາ ຄື ພວກນາກກໍທູນຖາມ ຄຸດກໍທູນຖາມ ຍັກກໍທູນຖາມ ອະສູນກໍທູນຖາມ ຄົນທັບກໍທູນຖາມ ທ້າວມະຫາຣາດກໍທູນຖາມ ພຣະອິນກໍທູນຖາມ ພຣະພົມກໍທູນຖາມ ເທວະດາກໍທູນຖາມ ນີ້ຊື່ວ່າການຖາມຂອງອະມະນຸດ

ການຖາມຂອງຮູບເນຣະມິດ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຊົງເນຣະມິດພຣະຮູບໃດ ເຊິ່ງສຳເລັດດ້ວຍພຣະທະໄທ ມີອະໄວຍະວະນ້ອຍໃຫຍ່ຄົບທຸກຢ່າງ ມີອິນຊີບໍ່ບົກຜ່ອງ ພຣະຮູບເນຣະມິດນັ້ນ ເຂົ້າເຝົ້າພຣະຜູ້ມີພຣະພາກພຸດທະເຈົ້າແລ້ວ ກໍທູນຖາມບັນຫາ ພຣະຜູ້ມີພຣະພາກເຈົ້າຊົງວິສັດຊະນາ ນີ້ຊື່ວ່າການຖາມຂອງຮູບເນຣະມິດ ເຫຼົ່ານີ້ຊື່ວ່າການຖາມອີກ ໓ ຢ່າງ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເພື່ອປະໂຫຍດ ຕົນ
໒. ການຖາມເພື່ອປະໂຫຍດ ຜູ້ອື່ນ
໓. ການຖາມເພື່ອປະໂຫຍດ ຕົນແລະຜູ້ອື່ນ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເພື່ອປະໂຫຍດ ໃນພົບປັດຈຸບັນ
໒. ການຖາມເພື່ອປະໂຫຍດ ໃນພົບໜ້າ
໓. ການຖາມເພື່ອປະໂຫຍດ ຢ່າງຍິ່ງ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເພື່ອປະໂຫຍດທີ່ ບໍ່ມີໂທດ
໒. ການຖາມເພື່ອປະໂຫຍດທີ່ ປາຈາກກິເລດ
໓. ການຖາມເພື່ອປະໂຫຍດທີ່ ຜຸດຜ່ອງ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງ ອະດີດ
໒. ການຖາມເຖິງ ອະນາຄົດ
໓. ການຖາມເຖິງ ປັດຈຸບັນ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງເລື້ອງ ພາຍໃນ
໒. ການຖາມເຖິງເລື້ອງ ພາຍນອກ
໓. ການຖາມເຖິງເລື້ອງ ທັງພາຍໃນແລະພາຍນອກ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງ ກຸສົນທຳ
໒. ການຖາມເຖິງ ອະກຸສົນທຳ
໓. ການຖາມເຖິງ ອັບພະຍາກະຕະທຳ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງ ຂັນ
໒. ການຖາມເຖິງ ທາດ
໓. ການຖາມເຖິງ ອາຍະຕະນະ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງ ສະຕິປັດຖານ

໒. ການຖາມເຖິງ ສຳມັບປະທານ
໓. ການຖາມເຖິງ ອິດທິບາດ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງ ອິນຊີ
໒. ການຖາມເຖິງ ພະລະ
໓. ການຖາມເຖິງ ໂພດຊົງ

ການຖາມອີກ ໓ ຢ່າງ ຄື

໑. ການຖາມເຖິງ ມັກ
໒. ການຖາມເຖິງ ຜົນ
໓. ການຖາມເຖິງ ນິບພານ

ຄຳວ່າ ຂໍທູນຖາມບັນຫານັ້ນ ອະທິບາຍວ່າ ຂ້າພຣະອົງຂໍທູນຖາມພຣະອົງ ຄື ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດວ່າ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ ລວມຄວາມວ່າ ຂໍທູນຖາມບັນຫານັ້ນ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ

ຄຳວ່າ ຂໍພຣະອົງໂຜດຕັດບອກບັນຫານັ້ນດ້ວຍເທີ້ນ ອະທິບາຍວ່າ ຂໍໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດ ລວມຄວາມວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານເມດຕະຄູທູນຖາມ ດັ່ງນີ້ ເປັນບົດສົນທິ ຯລຯ ລວມຄວາມວ່າ ທ່ານເມດຕະຄູທູນຖາມ ດັ່ງນີ້

ຄຳວ່າ ຂ້າພຣະອົງຍ່ອມສຳຄັນພຣະອົງວ່າຊົງເປັນຜູ້ຈົບເວດ ຊົງອົບຮົມພຣະອົງແລ້ວ ອະທິບາຍວ່າ ຂ້າພຣະອົງຍ່ອມສຳຄັນພຣະອົງວ່າຊົງເປັນຜູ້ຈົບເວດ ສຳຄັນພຣະອົງວ່າມີພຣະອົງອົບຮົມແລ້ວ ຄື ເຂົ້າໃຈແນວນີ້ ຮູ້ແນວນີ້ ຮູ້ລະອຽດແນວນີ້ ຮູ້ສະເພາະແນວນີ້ ແທງຕະຫຼອດແນວນີ້

# ວ່າດ້ວຍຜູ້ຈົບເວດ

ຄຳວ່າ ຊົງເປັນຜູ້ຈົບເວດ ຊົງອົບຮົມພຣະອົງແລ້ວ ອະທິບາຍວ່າ

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງເປັນຜູ້ຈົບເວດ ເປັນແນວໃດ?

ຍານ ປັນຍາ ປັນຍິນຊີ ປັນຍາພະລະ ໗ລ໗ ທຳມະວິຈະຍະສຳໂພດຊົງ ວິມັງສາ ວິປັດສະນາ ສຳມາທິດຖິໃນມັກທັງ ໔ ຮຽກວ່າ ເວດ

ພຣະຜູ້ມີພຣະພາກເຈົ້າຊົງເຖິງບ່ອນສຸດ ຊົງບັນລຸບ່ອນສຸດ ຊົງເຖິງສ່ວນສຸດ ຊົງບັນລຸສ່ວນສຸດ ຊົງເຖິງປາຍສຸດ ຊົງບັນລຸປາຍສຸດ ຊົງເຖິງທ້າຍສຸດ ຊົງບັນລຸທ້າຍສຸດ ຊົງເຖິງບ່ອນປົກປ້ອງ ຊົງບັນລຸບ່ອນປົກປ້ອງ ຊົງເຖິງບ່ອນຫຼົບຫຼີກ ຊົງບັນລຸບ່ອນຫຼົບຫຼີກ ຊົງເຖິງບ່ອນເພິ່ງ ຊົງບັນລຸບ່ອນເພິ່ງ ຊົງເຖິງບ່ອນບໍ່ມີໄພ ຊົງບັນລຸບ່ອນບໍ່ມີໄພ ຊົງເຖິງບ່ອນບໍ່ຈຸຕິ ຊົງບັນລຸບ່ອນບໍ່ຈຸຕິ ຊົງເຖິງບ່ອນບໍ່ຕາຍ ຊົງບັນລຸບ່ອນບໍ່ຕາຍ ຊົງເຖິງບ່ອນດັບ ຊົງບັນລຸບ່ອນດັບແຫ່ງຊາດຊະຣາ ແລະມໍຣະນະ ດ້ວຍເວດເຫຼົ່ານັ້ນ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊື່ວ່າຊົງເປັນຜູ້ຈົບເວດ ຍ້ອນຊົງເຖິງບ່ອນສຸດແຫ່ງເວດທັງຫຼາຍ

ຊື່ວ່າຊົງເປັນຜູ້ຈົບເວດ ຍ້ອນຊົງເຖິງບ່ອນສຸດດ້ວຍເວດທັງຫຼາຍ

ຊື່ວ່າຊົງເປັນຜູ້ຈົບເວດ ຍ້ອນຊົງເປັນຜູ້ຮູ້ແຈ້ງທຳ ໗ ປະການ ຄື

໑. ຊົງຮູ້ແຈ້ງ ສັກກາຍະທິດຖິ
໒. ຊົງຮູ້ແຈ້ງ ວິຈິກິດສາ
໓. ຊົງຮູ້ແຈ້ງ ສີລັບພະຕະປະຣາມາດ
໔. ຊົງຮູ້ແຈ້ງ ຣາຄະ
໕. ຊົງຮູ້ແຈ້ງ ໂທສະ
໖. ຊົງຮູ້ແຈ້ງ ໂມຫະ
໗. ຊົງຮູ້ແຈ້ງ ມານະ

ແລະພຣະອົງຊົງຮູ້ແຈ້ງບາບອະກຸສົນທຳ ເຊິ່ງເປັນເຫດແຫ່ງຄວາມເສົ້າໝອງ ກໍ່ພົບໃໝ່ມີຄວາມກະວົນກະວາຍ ມີທຸກເປັນວິບາກເປັນບ່ອນຕັ້ງແຫ່ງຊາດຊະຣາ ແລະມໍຣະນະຕໍ່ໄປ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ສະພິຍະ)

ບຸກຄົນວິໄຈເວດທັງໝົດຂອງສະມະນະພາມທີ່ມີຢູ່
ເປັນຜູ້ປາສະຈາກຣາຄະໃນເວທະນາທັງປວງ

ກ້າວລ່ວງເວດທັງປວງແລ້ວ ຊື່ວ່າ ຜູ້ຈົບເວດ
ພຣະຜູ້ມີພຣະພາກເຈົ້າ ຊື່ວ່າ ຊົງເປັນຜູ້ຈົບເວດ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງອົບຮົມພຣະອົງແລ້ວ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຊົງອົບຮົມພຣະວໍຣະກາຍແລ້ວ ອົບຮົມສີນ ອົບຮົມຈິດ ອົບຮົມປັນຍາ ອົບຮົມສະຕິປັດຖານ ອົບຮົມສຳມັບປະທານ ອົບຮົມອິດທິບາດ ອົບຮົມອິນຊີ ອົບຮົມພະລະ ອົບຮົມໂພດຊົງ ອົບຮົມມັກ ຊົງລະກິເລດໄດ້ແລ້ວ ຮູ້ແຈ້ງທຳທີ່ບໍ່ກຳເຮີບແລ້ວ ເຮັດນິໂຣດໃຫ້ແຈ້ງໄດ້ແລ້ວ ພຣະອົງຊົງກຳນົດຮູ້ທຸກໄດ້ແລ້ວ ລະສະມຸໄທໄດ້ແລ້ວ ຈະເລີນມັກໄດ້ແລ້ວ ເຮັດນິໂຣດໃຫ້ແຈ້ງໄດ້ແລ້ວ ຮູ້ຍິ່ງທຳທີ່ຄວນຮູ້ແລ້ວ ກຳນົດຮູ້ທຳທີ່ຄວນກຳນົດຮູ້ໄດ້ແລ້ວ ລະທຳທີ່ຄວນລະໄດ້ແລ້ວ ຈະເລີນທຳທີ່ຄວນຈະເລີນໄດ້ແລ້ວ ເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງໄດ້ແລ້ວ ພຣະອົງຊົງມີທຳບໍ່ນ້ອຍ ໃຫຍ່ ເລີກເຊີ່ງ ປະມານບໍ່ໄດ້ ຫຍັ່ງລົງໄດ້ຍາກ ມີພຣະທຳຣັດຕະນະຫຼາຍ ປຽບດັ່ງທະເລຫຼວງ ປະກອບດ້ວຍອຸເປກຂາມີອົງ ໖ (ຄື)

## ວ່າດ້ວຍອຸເປກຂາມີອົງ ໖

ພຣະຜູ້ມີພຣະພາກເຈົ້າຊົງເຫັນຮູບທາງພຣະເນດແລ້ວ ບໍ່ດີພຣະທະໄທ ບໍ່ເສຍພຣະທະໄທ ຊົງວາງເສີຍ ມີສະຕິສຳປະຊັນຍະຢູ່ ຊົງສະດັບສຽງທາງພຣະໂສຕະແລ້ວ ຯລຯ ຊົງດົມກິ່ນທາງພຣະນາສິກແລ້ວ ຯລຯ ຊົງຊີມຣົດທາງພຣະຊິວຫາແລ້ວ ຯລຯ ຊົງຖືກຕ້ອງໂຜດຖັບພະທາງພຣະວໍຣະກາຍແລ້ວ ຯລຯ ຊົງຮູ້ທຳມາຣົມທາງພຣະທະໄທແລ້ວ ກໍບໍ່ດີພຣະທະໄທ ບໍ່ເສຍພຣະທະໄທ ຊົງວາງເສີຍ ມີສະຕິສຳປະຊັນຍະຢູ່

ພຣະຜູ້ມີພຣະພາກເຈົ້າຊົງເຫັນຮູບທາງພຣະເນດແລ້ວ ກໍບໍ່ຕິດພຣະທະໄທ ບໍ່ຊົງຍິນດີຮູບທີ່ໜ້າພໍພຣະທະໄທ ບໍ່ຊົງໃຫ້ເກີດຄວາມກຳໜັດ ພຣະອົງມີພຣະວໍຣະກາຍຕັ້ງໝັ້ນ ມີພຣະທະໄທຕັ້ງໝັ້ນ ດຳຣົງຢູ່ດ້ວຍດີພາຍໃນ ຫຼຸດພົ້ນດີແລ້ວ ຊົງເຫັນຮູບນັ້ນທີ່ບໍ່ໜ້າພໍພຣະທະໄທທາງພຣະເນດແລ້ວ ກໍບໍ່ເສຍພຣະທະໄທ ບໍ່ໂກດ ບໍ່ຫົດຫູ່ ບໍ່ພະຍາບາດ ພຣະອົງມີພຣະວໍຣະກາຍຕັ້ງໝັ້ນ ມີພຣະທະໄທຕັ້ງໝັ້ນ ດຳຣົງຢູ່ດ້ວຍດີພາຍໃນ ຊົງຫຼຸດພົ້ນດີແລ້ວ ສະດັບສຽງທາງພຣະໂສຕະແລ້ວ ຯລຯ ຊົງດົມກິ່ນທາງພຣະນາສິກແລ້ວ ຯລຯ ຊົງຊີມຣົດທາງພຣະຊິວຫາແລ້ວ ຯລຯ ຊົງຖືກຕ້ອງໂຜດຖັບພະທາງພຣະວໍຣະກາຍແລ້ວ ຯລຯ ຊົງຮູ້ທຳມາຣົມ ທາງພຣະທະໄທແລ້ວ ກໍບໍ່ຕິດພຣະທະໄທ ບໍ່ຊົງຍິນດີທຳມາຣົມທີ່ໜ້າພໍພຣະທະໄທ ບໍ່ຊົງໃຫ້ເກີດຄວາມກຳໜັດ ພຣະອົງມີພຣະວໍຣະກາຍຕັ້ງໝັ້ນ ມີພຣະທະໄທຕັ້ງໝັ້ນ ດຳຣົງຢູ່ດ້ວຍດີພາຍໃນ ຊົງຫຼຸດພົ້ນດີແລ້ວ ຊົງຮູ້ທຳມາຣົມນັ້ນທີ່ບໍ່ໜ້າພໍໃຈທາງພຣະທະໄທແລ້ວ ກໍບໍ່ເສຍພຣະທະໄທ ບໍ່ໂກດ ບໍ່ຫົດຫູ່ ບໍ່ພະຍາບາດ ພຣະອົງມີພຣະວໍຣະກາຍຕັ້ງໝັ້ນ ມີພຣະທະໄທຕັ້ງໝັ້ນ ດຳຣົງຢູ່ດ້ວຍດີພາຍໃນ ຫຼຸດພົ້ນດີແລ້ວ

ພຣະຜູ້ມີພຣະພາກເຈົ້າຊົງເຫັນຮູບທາງພຣະເນດແລ້ວ ກໍມີພຣະວໍຣະກາຍຕັ້ງໝັ້ນໃນຮູບທີ່ພໍພຣະຫະໄທ ແລະບໍ່ພໍພຣະຫະໄທ ມີພຣະຫະໄທຕັ້ງໝັ້ນ ດຳຣົງຢູ່ດ້ວຍດີພາຍໃນ ຫຼຸດພົ້ນດີແລ້ວ ສະດັບສຽງທາງພຣະໂສຕະແລ້ວ ຯລຯ ຊົງດົມກິ່ນທາງພຣະນາສິກແລ້ວ ຯລຯ ຊົງຊີມຣົດ ທາງພຣະຊິວຫາແລ້ວ ຯລຯ ຊົງຖືກຕ້ອງໂຜດຖັບພະທາງພຣະວໍຣະກາຍແລ້ວ ຯລຯ ຊົງຮູ້ທຳມາຣົມທາງພຣະຫະໄທແລ້ວ ກໍມີພຣະວໍຣະກາຍຕັ້ງໝັ້ນໃນທຳມາຣົມທີ່ພໍພຣະຫະໄທແລະບໍ່ພໍພຣະຫະໄທ ມີພຣະຫະໄທຕັ້ງໝັ້ນ ດຳຣົງຢູ່ດ້ວຍດີພາຍໃນ ຫຼຸດພົ້ນດີແລ້ວ

ພຣະຜູ້ມີພຣະພາກເຈົ້າຊົງເຫັນຮູບທາງພຣະເນດແລ້ວ ກໍບໍ່ຊົງກຳໜັດໃນຮູບທີ່ຊວນກຳໜັດ ບໍ່ຂັດເຄືອງໃນຮູບທີ່ຊວນຂັດເຄືອງ ບໍ່ຫຼົງໃນຮູບທີ່ຊວນໃຫ້ຫຼົງ ບໍ່ໂກດໃນຮູບທີ່ຊວນໃຫ້ໂກດ ບໍ່ເສົ້າໝອງໃນຮູບທີ່ຊວນໃຫ້ເສົ້າໝອງ ບໍ່ມົວເມົາໃນຮູບທີ່ຊວນໃຫ້ມົວເມົາ ສະດັບສຽງທາງພຣະໂສຕະແລ້ວ ຯລຯ ຊົງດົມກິ່ນທາງພຣະນາສິກແລ້ວ ຯລຯ ຊົງຊີມຣົດທາງພຣະຊິວຫາແລ້ວ ຯລຯ ຊົງຖືກຕ້ອງໂຜດຖັບພະທາງພຣະວໍຣະກາຍແລ້ວ ຯລຯ ຊົງຮູ້ທຳມາຣົມທາງພຣະຫະໄທແລ້ວ ກໍບໍ່ຊົງກຳໜັດໃນທຳມາຣົມທີ່ຊວນໃຫ້ກຳໜັດ ບໍ່ຊົງຂັດເຄືອງໃນທຳມາຣົມທີ່ຊວນໃຫ້ຂັດເຄືອງ ບໍ່ຫຼົງໃນທຳມາຣົມທີ່ຊວນໃຫ້ຫຼົງ ບໍ່ຊົງມົວເມົາໃນທຳມາຣົມທີ່ຊວນໃຫ້ມົວເມົາ ບໍ່ຊົງເສົ້າໝອງໃນທຳມາຣົມທີ່ຊວນໃຫ້ເສົ້າໝອງ

ພຣະຜູ້ມີພຣະພາກເຈົ້າເມື່ອທອດພຣະເນດເຫັນ ກໍສັກແຕ່ວ່າທອດພຣະເນດເຫັນ ເມື່ອສະດັບຮັບຟັງກໍສັກແຕ່ວ່າສະດັບຮັບຟັງ ເມື່ອຮັບຮູ້ ກິ່ນ ຣົດ ໂຜດຖັບພະ ກໍສັກແຕ່ວ່າຮັບຮູ້ ເມື່ອຮູ້ແຈ້ງທຳມາຣົມກໍສັກວ່າຮູ້ແຈ້ງ ບໍ່ຊົງຕິດໃນຮູບທີ່ຊົງເຫັນ ບໍ່ຊົງຕິດໃນສຽງທີ່ໄດ້ສະດັບ ບໍ່ຊົງຕິດໃນກິ່ນ ບໍ່ຊົງຕິດໃນຣົດ ແລະບໍ່ຊົງຕິດໃນສຳຜັດທີ່ຮັບຮູ້ ບໍ່ຊົງຕິດໃນທຳມາຣົມທີ່ຊົງຮູ້ແຈ້ງ ບໍ່ມີຕັນຫາ ບໍ່ມີໃຈປະທຸດສະຮ້າຍ ຕັນຫາແລະທິດຖິບໍ່ອາໄສ ບໍ່ພົວພັນ ພົ້ນຂາດ ບໍ່ກ່ຽວຂ້ອງໃນຮູບທີ່ຊົງເຫັນ ມີພຣະຫະໄທເປັນອິດສະຫຼະ (ຈາກກິເລດ) ຢູ່ ບໍ່ມີຕັນຫາ ບໍ່ມີໃຈປະທຸດສະຮ້າຍ ຕັນຫາແລະທິດຖິບໍ່ອາໄສ ບໍ່ຊົງພົວພັນ ພົ້ນຂາດ ບໍ່ຊົງກ່ຽວຂ້ອງໃນສຽງທີ່ໄດ້ສະດັບ ຯລຯ ໃນກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ ຯລຯ ໃນທຳມາຣົມທີ່ຊົງຮູ້ແຈ້ງ ມີພຣະຫະໄທເປັນອິດສະຫຼະ (ຈາກກິເລດ) ຢູ່

ພຣະຜູ້ມີພຣະພາກເຈົ້າມີພຣະເນດ ຊົງເຫັນຮູບທາງພຣະເນດ ແຕ່ພຣະຜູ້ມີພຣະພາກເຈົ້າບໍ່ຊົງມີຄວາມກຳໜັດດ້ວຍຄວາມພໍພຣະຫະໄທ ມີພຣະຫະໄທຫຼຸດພົ້ນດີແລ້ວ ພຣະຜູ້ມີພຣະພາກເຈົ້າກໍມີພຣະໂສຕະ ສະດັບສຽງທາງພຣະໂສຕະ ແຕ່ບໍ່ຊົງມີຄວາມກຳໜັດດ້ວຍຄວາມພໍພຣະຫະໄທ ມີພຣະຫະໄທຫຼຸດພົ້ນດີແລ້ວ ພຣະຜູ້ມີພຣະພາກເຈົ້າກໍມີພຣະນາສິກ ຊົງດົມກິ່ນທາງພຣະນາສິກ ແຕ່ບໍ່ຊົງມີຄວາມກຳໜັດດ້ວຍຄວາມພໍພຣະຫະໄທ ມີພຣະຫະໄທຫຼຸດພົ້ນດີແລ້ວ ພຣະຜູ້ມີພຣະພາກເຈົ້າກໍມີພຣະຊິວຫາ ຊົງຊີມຣົດທາງພຣະຊິວຫາ ແຕ່ບໍ່ຊົງມີຄວາມກຳໜັດດ້ວຍຄວາມພໍພຣະຫະໄທ ມີພຣະຫະໄທຫຼຸດພົ້ນດີແລ້ວ ພຣະຜູ້ມີພຣະພາກເຈົ້າກໍມີພຣະວໍຣະກາຍ ຊົງຖືກ

ຕ້ອງໂຜດຖັບພະທາງພຣະວໍຣະກາຍ ແຕ່ບໍ່ຊົງມີຄວາມກໍາໜັດດ້ວຍຄວາມພໍພຣະຫະໄທ ມີພຣະຫະໄທຫຼຸດພົ້ນດີແລ້ວ ພຣະຜູ້ມີພຣະພາກເຈົ້າກໍມີພຣະຫະໄທ ຊົງຮູ້ທໍາມາຣົມທາງພຣະຫະໄທແລ້ວ ແຕ່ບໍ່ຊົງມີຄວາມກໍາໜັດດ້ວຍຄວາມພໍພຣະຫະໄທ ມີພຣະຫະໄທຫຼຸດພົ້ນດີແລ້ວ ຕາທີ່ມັກຮູບ ຍິນດີໃນຮູບ ຊື່ນຊົມໃນຮູບ ພຣະຜູ້ມີພຣະພາກເຈົ້າຊົງຝຶກ ຄຸ້ມຄອງ ຮັກສາ ສັງລວມພຣະເນດ ແລະຊົງສະແດງທໍາເພື່ອສັງລວມຕານັ້ນ ຫູທີ່ມັກສຽງ ຍິນດີໃນສຽງ ຊື່ນຊົມໃນສຽງ ໆລໆ ດັງທີ່ມັກກິ່ນ ຍິນດີໃນກິ່ນ ໆລໆ ລີ້ນທີ່ມັກຣົດ ຍິນດີໃນຣົດ ຊື່ນຊົມໃນຣົດ ພຣະຜູ້ມີພຣະພາກເຈົ້າຊົງຝຶກ ຄຸ້ມຄອງ ຮັກສາ ສັງລວມລີ້ນ ແລະຊົງສະແດງທໍາເພື່ອສັງລວມລີ້ນນັ້ນ ກາຍທີ່ມັກໂຜດຖັບພະ ຍິນດີໃນໂຜດຖັບພະ ຊື່ນຊົມໃນໂຜດຖັບພະ ໃຈມັກທໍາມາຣົມ ຍິນດີໃນທໍາມາຣົມຊື່ນຊົມໃນທໍາມາຣົມ ພຣະຜູ້ມີພຣະພາກເຈົ້າຊົງຝຶກ ຄຸ້ມຄອງ ຮັກສາ ສັງລວມ ແລະຊົງສະແດງທໍາເພື່ອສັງລວມໃຈນັ້ນ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

ຄົນທັງຫຼາຍນໍາສັດພາຫະນະທີ່ຝຶກແລ້ວໄປສູ່ບ່ອນປະຊຸມ
ພຣະຣາຊາຍ່ອມຊົງຣາດຊະພາຫະນະທີ່ຝຶກດີແລ້ວ
ໃນໝູ່ມະນຸດ ຄົນທີ່ຝຶກແລ້ວ ເຊິ່ງອົດກັ້ນຕໍ່ຄໍາລ່ວງເກີນໄດ້ ປະເສີດສຸດ

ມ້າອັດສະດອນ ມ້າອາຊາໄນ ມ້າສິນທົບ ຊ້າງໃຫຍ່
ທີ່ໄດ້ຮັບການຝຶກຫັດດີແລ້ວ ປະເສີດ
ແຕ່ຄົນທີ່ຝຶກຫັດແລ້ວ ປະເສີດກວ່າສັດພາຫະນະເຫຼົ່ານັ້ນ

ຍ້ອນໃຜກໍບໍ່ສາມາດໄປເຖິງນິບພານອັນເປັນທິດທີ່ບໍ່ເຄີຍໄປ
ດ້ວຍຍານພາຫະນະເຫຼົ່ານັ້ນໄດ້
ເໝືອນບຸກຄົນຜູ້ຝຶກແລ້ວ ມີຕົນຝຶກຫັດແລ້ວຢ່າງດີ ໄປເຖິງໄດ້[๑]

ພຣະອະຣະຫັນທັງຫຼາຍ ຫຼຸດພົ້ນຈາກພົບໃໝ່ແລ້ວ
ບັນລຸເຖິງພູມທີ່ຝຶກແລ້ວ ຍ່ອມບໍ່ຫວັ່ນໄຫວໃນມານະທັງຫຼາຍ
ທ່ານເປັນຜູ້ຊະນະແລ້ວໃນໂລກ[๒]

ຜູ້ໃດອົບຣົມອິນຊີແລ້ວໃນໂລກທັງປວງ ທັງພາຍໃນແລະພາຍນອກ
ຜູ້ນັ້ນເປັນຜູ້ອົບຣົມແລ້ວ ຝຶກດີແລ້ວ ຮູ້ແຈ້ງທັງໂລກນີ້ແລະປະຣະໂລກ
ຄອຍຖ້າຢູ່ແຕ່ເວລາເທົ່ານັ້ນ

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງອົບຮົມພຣະອົງແລ້ວ ແນວນີ້ ລວມຄວາມວ່າ ຂ້າພຣະອົງຍ່ອມສຳຄັນພຣະອົງວ່າ ຊົງເປັນຜູ້ຈົບເວດ ຊົງອົບຮົມພຣະອົງແລ້ວ

## ວ່າດ້ວຍທຸກ

ຄຳວ່າ ຈາກໃສນໍ ໃນຄຳວ່າ ທຸກເຫຼົ່ານີ້ເກີດມາຈາກໃສນໍ ເປັນຄຳຖາມດ້ວຍຄວາມສົງໄສ ເປັນຄຳຖາມດ້ວຍຄວາມຂ້ອງໃຈ ເປັນຄຳຖາມ ໘ ແງ່ ເປັນຄຳຖາມມີມຸມຫຼາຍວ່າ ແນວນີ້ແມ່ນບໍ ບໍ່ແມ່ນແມ່ນບໍ ເປັນອັນໃດນໍ ເປັນແນວໃດນໍ ລວມຄວາມວ່າ ຈາກໃສນໍ

ຄຳວ່າ ທຸກ ໄດ້ແກ່ ຊາດທຸກ ຊະຣາທຸກ ພະຍາທິທຸກ ມໍຣະນະທຸກ ໂສກະປະຣິເທວະທຸກຂະໂທມະນັດອຸປາຍາດທຸກ ທຸກຄືຄວາມເສຍຫາຍ ທຸກເນື່ອງຈາກການເກີດໃນນະຣົກ ທຸກເນື່ອງຈາກການເກີດໃນກຳເນີດເດຍຣັດສານ ທຸກເນື່ອງຈາກການເກີດໃນເຜດວິໄສ ທຸກເນື່ອງຈາກການເກີດໃນໂລກມະນຸດ ທຸກເນື່ອງຈາກການຖືກຳເນີດໃນທ້ອງ ທຸກເນື່ອງຈາກການຢູ່ໃນທ້ອງ ທຸກເນື່ອງຈາກການເກີດຈາກທ້ອງ ທຸກທີ່ສືບເນື່ອງມາຈາກຜູ້ເກີດ ທຸກຂອງຜູ້ເກີດທີ່ເນື່ອງມາຈາກຜູ້ອື່ນ ທຸກທີ່ເກີດຈາກຄວາມພະຍາຍາມຂອງຕົນເອງ ທຸກທີ່ເກີດຈາກຄວາມພະຍາຍາມຂອງຜູ້ອື່ນ ຄວາມທຸກກາຍ ຄວາມທຸກໃຈ ທຸກໃນສົງສານ ທຸກທີ່ເກີດຈາກຄວາມຜັນປ່ຽນ ໂຣກທາງຕາ ໂຣກທາງຫູ ໂຣກທາງດັງ ໂຣກທາງລີ້ນ ໂຣກທາງກາຍ ໂຣກຫົວ ໂຣກຫູ ໂຣກປາກ ໂຣກແຂ້ວ ໂຣກໄອ ໂຣກຫືດ ໄຂ້ຫວັດ ໄຂ້ພິດ ໄຂ້ເຊື່ອງຊຶມ ໂຣກທ້ອງ ເປັນລົມສະຫລົບ ລົງແດງ ຈຸກສຽດ ອະຫິວາຕະກະໂຣກ ໂຣກຂີ້ທູດ ຝີ ກາກ ມອງຄໍ່ ລົມບ້າໝູ ທຶດເປື່ອຍ ທຶດດ້ານ ທຶດ ທູດ ໂຣກລະລອກ ໂຣກບິຊ່ານ ໂຣກບິກຳເຣີບ ໂຣກເບົາຫວານ ໂຣກເຣີມ ໂຣກພຸພອງ ໂຣກຣິດສີດວງ ຄວາມເຈັບປ່ວຍທີ່ເກີດຈາກດີ ຄວາມເຈັບປ່ວຍທີ່ເກີດຈາກເສມຫະ ຄວາມເຈັບປ່ວຍທີ່ເກີດຈາກລົມ ໄຂ້ສັນນິບາດ ຄວາມເຈັບປ່ວຍທີ່ເກີດຈາກການປ່ຽນລະດູ ຄວາມເຈັບປ່ວຍທີ່ເກີດຈາກການຜັດປ່ຽນອິລິຍາບົດບໍ່ໄດ້ສ່ວນ ຄວາມເຈັບປ່ວຍທີ່ເກີດຈາກຄວາມພາກພຽນເກີນກຳລັງ ຄວາມເຈັບປ່ວຍທີ່ເກີດຈາກຜົນກຳ ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ປວດອຸດຈາຣະ ປວດປັດສາວະ ທຸກທີ່ເກີດຈາກສຳຜັດແຫ່ງເຫຼືອດ ຍຸງ ລົມ ແດດ ແລະສັດເລືອຄານ ທຸກຍ້ອນມານດາຕາຍ ທຸກຍ້ອນບິດາຕາຍ ທຸກຍ້ອນອ້າຍນ້ອງຊາຍຕາຍ ທຸກຍ້ອນເອື້ອຍນ້ອງສາວຕາຍ ທຸກຍ້ອນບຸດຕາຍ ທຸກຍ້ອນທິດາຕາຍ ທຸກຍ້ອນຄວາມພິນາດຂອງຍາດພີ່ນ້ອງ ທຸກຍ້ອນຄວາມເສຍຫາຍທີ່ເກີດຈາກໂຣກ ທຸກຍ້ອນໂພຄະຊັບພິນາດ ທຸກຍ້ອນສີນວິບັດ ທຸກຍ້ອນທິດຖິວິບັດ

ຄວາມເກີດຂຶ້ນແຫ່ງທຳເຫຼົ່າໃດຜາກົດໃນເບື້ອງຕົ້ນ ຄວາມດັບແຫ່ງທຳເຫຼົ່ານັ້ນຍ່ອມຜາກົດໃນເບື້ອງປາຍ ວິບາກອາໄສກຳ ກຳກໍອາໄສວິບາກ ຮູບອາໄສນາມ ນາມກໍອາໄສຮູບ

ນາມຮູບເປັນໄປຕາມຊາດ ຊະຣາຕິດຕາມ ພະຍາທິຄອບງຳ ມໍຣະນະຍ່ຳຍີ ຕົກຢູ່ໃນຄວາມທຸກ ບໍ່ມີບ່ອນຕ້ານທານ ບໍ່ມີບ່ອນຫຼົບຫຼີກ ບໍ່ມີບ່ອນເພິ່ງ ບໍ່ມີບ່ອນອາໄສ ເຫຼົ່ານີ້ຮຽກວ່າ ທຸກ

ທ່ານເມດຕະຄູທູນຖາມເຖິງມູນ ເຫດ ຕົ້ນເຫດ ການເກີດຂຶ້ນ ແດນເກີດ ສະມຸດຖານ ອາຫານ ອາລົມ ປັດໄຈ ເຫດເກີດແຫ່ງທຸກເຫຼົ່ານີ້ວ່າ ເກີດມາຈາກໃສນໍ ຄື ເກີດຈາກໃສ ເກີດຂຶ້ນຈາກໃສ ບັງເກີດຈາກໃສ ບັງເກີດຂຶ້ນຈາກໃສ ຜາກົດຈາກໃສ ໄດ້ແກ່ ມີອັນໃດເປັນຕົ້ນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ຄື ຂໍທູນຖາມ ທູນຂໍ ທູນອາຣາດທະນາ ທູນໃຫ້ຊົງປະກາດ ລວມຄວາມວ່າ ທຸກເຫຼົ່ານີ້ເກີດມາຈາກໃສນໍ

ຄຳວ່າ ອັນໃດກໍຕາມ ໃນຄຳວ່າ ທຸກຫຼາຍຮູບແບບອັນໃດກໍຕາມ ໆລໆ ໃນໂລກ ໄດ້ແກ່ ທຸກສິ່ງໂດຍອາການທັງໝົດ ທຸກຢ່າງ ບໍ່ເຫຼືອ ບໍ່ມີສ່ວນເຫຼືອໂດຍປະການທັງປວງ ຄຳວ່າ ອັນໃດກໍຕາມ ນີ້ ເປັນຄຳກ່າວລວມ ໆ ໄວ້ທັງໝົດ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ

ຄຳວ່າ ຫຼາຍຮູບແບບ ໄດ້ແກ່ ທຸກຫຼາຍຢ່າງ ຕ່າງປະການ ລວມຄວາມວ່າ ທຸກຫຼາຍຮູບແບບອັນໃດກໍຕາມ ໆລໆ ໃນໂລກ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

(ທ່ານເມດຕະຄູທູນຖາມ ດັ່ງນີ້)

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ
ຂ້າພຣະອົງຍ່ອມສຳຄັນພຣະອົງວ່າ ຊົງເປັນຜູ້ຈົບເວດ
ຊົງອົບຮົມພຣະອົງແລ້ວ ທຸກຫຼາຍຮູບແບບອັນໃດກໍຕາມໃນໂລກ
ທຸກເຫຼົ່ານີ້ເກີດມາຈາກໃສນໍ

[໑໙] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດຕະຄູ)

ທ່ານໄດ້ຖາມເຖິງແດນເກີດແຫ່ງທຸກກັບເຮົາແລ້ວ
ເຮົາຈະບອກແດນເກີດແຫ່ງທຸກນັ້ນແກ່ທ່ານຕາມທີ່ເຮົາຮູ້
ທຸກຫຼາຍຮູບແບບອັນໃດກໍຕາມໃນໂລກ
ລ້ວນເກີດມາຈາກອຸປະທິເປັນຕົ້ນເຫດ (໔)

ຄຳວ່າ ແຫ່ງທຸກ ໃນຄຳວ່າ ທ່ານໄດ້ຖາມເຖິງແດນເກີດແຫ່ງທຸກກັບເຮົາແລ້ວໄດ້ແກ່ ຊາດທຸກ ຊະຣາທຸກ ພະຍາທິທຸກ ມໍຣະນະທຸກ ໂສກະ ປະຣິເທວະ ທຸກຂະໂທມະນັດ ອຸປາຍາດທຸກ

ຄຳວ່າ ທ່ານໄດ້ຖາມເຖິງແດນເກີດ ອະທິບາຍວ່າ ທ່ານໄດ້ຖາມເຖິງມູນ ຖາມເຖິງເຫດ ຖາມເຖິງຕົ້ນເຫດ ຖາມເຖິງການເກີດຂຶ້ນ ຖາມເຖິງແດນເກີດ ຖາມເຖິງສະມຸດຖານ ຖາມເຖິງອາຫານ ຖາມເຖິງອາລົມ ຖາມເຖິງປັດໄຈ ຖາມເຖິງເຫດເກີດແຫ່ງທຸກ ຄື ຂໍອັນເຊີນໃຫ້ປະກາດ ລວມຄວາມວ່າ ທ່ານໄດ້ຖາມເຖິງແດນເກີດແຫ່ງທຸກກັບເຮົາແລ້ວ

ຄຳວ່າ ເມດຕະຄູ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດຕະຄູ

ຄຳວ່າ ແດນເກີດແຫ່ງທຸກນັ້ນ ໃນຄຳວ່າ ເຮົາຈະບອກແດນເກີດແຫ່ງທຸກນັ້ນແກ່ທ່ານຕາມທີ່ເຮົາຮູ້ ອະທິບາຍວ່າ ເຮົາຈະບອກ ຄື ຈັກເວົ້າ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດມູນ ບອກເຫດ ບອກຕົ້ນເຫດ ບອກການເກີດຂຶ້ນ ບອກແດນເກີດ ບອກສະມຸດຖານ ບອກອາຫານ ບອກອາລົມ ບອກປັດໄຈ ບອກເຫດເກີດ ລວມຄວາມວ່າ ເຮົາຈະບອກແດນເກີດແຫ່ງທຸກນັ້ນແກ່ທ່ານ

ຄຳວ່າ ຕາມທີ່ເຮົາຮູ້ ອະທິບາຍວ່າ ເຮົາຈະບອກທຳທີ່ຮູ້ດ້ວຍຕົນເອງ ທຳທີ່ໄດ້ປະຈັກແກ່ຕົນເອງຕາມທີ່ເຮົາຮູ້ ຄື ຕາມທີ່ເຮົາຮູ້ ຮູ້ທົ່ວ ຮູ້ຊັດແຈ້ງ ຮູ້ສະເພາະ ແທງຕະຫຼອດ ບໍ່ແມ່ນໂດຍອາການເຊື່ອຜູ້ອື່ນວ່າທຳນີ້ເປັນດັ່ງນີ້ ໆ ບໍ່ແມ່ນໂດຍການເລົ່າລື ບໍ່ແມ່ນໂດຍການຖືສືບ ໆ ກັນມາ ບໍ່ແມ່ນໂດຍການອ້າງຕຳລາ ບໍ່ແມ່ນໂດຍຕັກກະ ບໍ່ແມ່ນໂດຍການອະນຸມານ ບໍ່ແມ່ນໂດຍການຄິດຕອງຕາມແນວເຫດຜົນ ບໍ່ແມ່ນຍ້ອນເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ລວມຄວາມວ່າ ເຮົາຈະບອກແດນເກີດແຫ່ງທຸກນັ້ນແກ່ທ່ານຕາມທີ່ເຮົາຮູ້

## ວ່າດ້ວຍອຸປະທິ ໑໐

ຄຳວ່າ ທຸກ ຯລຯ ລ້ວນເກີດມາຈາກອຸປະທິເປັນຕົ້ນເຫດ ອະທິບາຍວ່າ

ຄຳວ່າ ອຸປະທິ ໄດ້ແກ່ ອຸປະທິ ໑໐ ຢ່າງ ຄື

໑. ອຸປະທິຄື ຕັນຫາ
໒. ອຸປະທິຄື ກິເລດ
໓. ອຸປະທິຄື ທຸດຈະຣິດ
໗. ອຸປະທິຄື ປະຕິຄະ
໙. ອຸປະທິຄື ອາຍະຕະນະພາຍໃນ ໖
໘. ອຸປະທິຄື ທິດຖິ
໔. ອຸປະທິຄື ກຳ
໖. ອຸປະທິຄື ອາຫານ
໙. ອຸປະທິຄື ອຸປາທິນນະທາດ ໔
໑໐. ອຸປະທິຄື ໝວດວິນຍານ ໖

ທຸກແມ່ນທັງໝົດ ກໍເປັນອຸປະທິ ຍ້ອນມີຄວາມໝາຍວ່າ ທົນໄດ້ຍາກ ເຫຼົ່ານີ້ຮຽກວ່າ ອຸປະທິ ໑໐

ຄຳວ່າ ທຸກ ໄດ້ແກ່ ຊາດທຸກ ຊະຣາທຸກ ພະຍາທິທຸກ ມໍຣະນະທຸກ ໂສກະປະຣິເທວະທຸກຂະໂທມະນັດອຸປາຍາດທຸກ ໆລໆ ພະຍາທິຄອບງຳ ມໍຣະນະຍ່ຳຍີ ຕົກຢູ່ໃນຄວາມທຸກ ບໍ່ມີບ່ອນຕ້ານທານ ບໍ່ມີບ່ອນຫຼົບຫຼີກ ບໍ່ມີບ່ອນເພິ່ງ ບໍ່ມີບ່ອນອາໄສ ເຫຼົ່ານີ້ຮຽກວ່າ ທຸກ ທຸກເຫຼົ່ານີ້ມີອຸປະທິເປັນຕົ້ນເຫດ ຄືມີອຸປະທິເປັນເຫດ ມີອຸປະທິເປັນປັດໄຈ ມີອຸປະທິເປັນການ ຊື່ວ່າເກີດມາ ຄື ກຳເນີດມາ ເກີດຂຶ້ນ ບັງເກີດແຕ່ອຸປະທິເປັນຕົ້ນເຫດ ລວມຄວາມວ່າ ທຸກ ໆລໆ ລ້ວນເກີດມາແຕ່ອຸປະທິເປັນຕົ້ນເຫດ

ຄຳວ່າ ອັນໃດກໍຕາມ ໃນຄຳວ່າ ຫຼາຍຮູບແບບອັນໃດກໍຕາມໃນໂລກ ອະທິບາຍວ່າ ທຸກສິ່ງໂດຍອາການທັງໝົດ ທຸກຢ່າງ ບໍ່ເຫຼືອ ບໍ່ມີສ່ວນເຫຼືອໂດຍປະການທັງປວງ ຄຳວ່າ ອັນໃດກໍຕາມ ນີ້ ເປັນຄຳກ່າວລວມ ໆ ໄວ້ທັງໝົດ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ

ຄຳວ່າ ຫຼາຍຮູບແບບ ໄດ້ແກ່ ທຸກຫຼາຍຢ່າງ ຕ່າງປະການ ລວມຄວາມວ່າ ຫຼາຍຮູບແບບອັນໃດກໍຕາມໃນໂລກ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດຕະຄູ)

ທ່ານໄດ້ຖາມເຖິງແດນເກີດແຫ່ງທຸກກັບເຮົາແລ້ວ
ເຮົາຈະບອກແດນເກີດແຫ່ງທຸກນັ້ນແກ່ທ່ານຕາມທີ່ເຮົາຮູ້
ທຸກຫຼາຍຮູບແບບອັນໃດກໍຕາມໃນໂລກ
ລ້ວນເກີດມາຈາກອຸປະທິເປັນຕົ້ນເຫດ

[໔໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ຜູ້ໃດແລ ບໍ່ມີປັນຍາ ຍ່ອມກໍ່ອຸປະທິ
ຜູ້ນັ້ນຈັດວ່າເປັນຄົນຈ້ຳ ຍ່ອມເຂົ້າເຖິງທຸກຢູ່ເລື້ອຍ ໆ
ຍ້ອນແນວນັ້ນ ບຸກຄົນຮູ້ຢູ່ ເປັນຜູ້ມີປົກກະຕິພິຈາລະນາເຫັນທຸກວ່າ
ມີຊາດເປັນແດນເກີດ ບໍ່ຄວນກໍ່ອຸປະທິ (໓)

ຄຳວ່າ ຜູ້ໃດ ໃນຄຳວ່າ ຜູ້ໃດແລ ບໍ່ມີປັນຍາ ຍ່ອມກໍ່ອຸປະທິ ໄດ້ແກ່ ຜູ້ໃດ ຄື ຜູ້ເຊັ່ນໃດຜູ້ຂວນຂວາຍແນວໃດ ຜູ້ຕັ້ງໃຈຢ່ແນວໃດ ຜູ້ມີປະການແນວໃດ ຜູ້ເຖິງຖານະໃດ ຜູ້ປະກອບດ້ວຍທຳໃດ ຈະເປັນກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາ ຫຼື ມະນຸດ ກໍຕາມ

ຄຳວ່າ ບໍ່ມີປັນຍາ ໄດ້ແກ່ ໄປຕາມອະວິດຊາ ຄື ບໍ່ມີຄວາມຮູ້ ບໍ່ມີປັນຍາແຈ່ມກະຈ່າງ ມີປັນຍາປຶກ

ຄຳວ່າ ຍ່ອມກໍ່ອຸປະທິ ອະທິບາຍວ່າ ຍ່ອມກໍ່ອຸປະທິຄືຕັນຫາ ກໍ່ອຸປະທິຄືທິດຖິ ກໍ່ອຸປະທິຄື ກິເລດ ກໍ່ອຸປະທິຄືກຳ ກໍ່ອຸປະທິຄືທຸດຈະຣິດ ກໍ່ອຸປະທິຄືອາຫານ ກໍ່ອຸປະທິຄືປະຕິຄະ ກໍ່ອຸປະທິຄືອຸປາທິນນະທາດ ໔ ກໍ່ອຸປະທິຄືອາຍະຕະນະພາຍໃນ ໖ ກໍ່ອຸປະທິຄືໝວດວິນຍານ ໖ ຄື ໃຫ້ເກີດ ໃຫ້ເກີດຂຶ້ນ ໃຫ້ບັງເກີດ ໃຫ້ບັງເກີດຂຶ້ນ ລວມຄວາມວ່າ ຜູ້ໃດ ບໍ່ມີປັນຍາ ຍ່ອມກໍ່ອຸປະທິ

ຄຳວ່າ ຜູ້ນັ້ນຈັດວ່າເປັນຄົນຈ້ຳ ຍ່ອມເຂົ້າເຖິງທຸກເລື້ອຍ ໆ ອະທິບາຍວ່າ ເຖິງ ເຂົ້າເຖິງ ເຂົ້າໄປເຖິງ ຄື ຖື ຢຶດໝັ້ນ ຖືໝັ້ນ ຊາດທຸກ ຊະຣາທຸກ ພະຍາທິທຸກ ມໍຣະນະທຸກ ໂສກະປະຣິເທວະທຸກຂະໂທມະນັດອຸປາຍາດທຸກ ລວມຄວາມວ່າ ຍ່ອມເຂົ້າເຖິງທຸກເລື້ອຍ ໆ

ຄຳວ່າ ເປັນຄົນຈ້ຳ ໄດ້ແກ່ ເປັນຄົນຈ້ຳ ຄື ເປັນຄົນຫຼົງ ບໍ່ມີປັນຍາ ໄປຕາມອະວິດຊາ ບໍ່ມີຍານ ບໍ່ມີປັນຍາແຈ່ມແຈ້ງ ມີປັນຍາປຶກ ລວມຄວາມວ່າ ຜູ້ນັ້ນຈັດວ່າເປັນຄົນຈ້ຳ ຍ່ອມເຂົ້າເຖິງທຸກຢູ່ເລື້ອຍ ໆ

ຄຳວ່າ ຍ້ອນແນວນັ້ນໃນຄຳວ່າ ຍ້ອນແນວນັ້ນ ບຸກຄົນຮູ້ຢູ່ ຯລຯ ບໍ່ຄວນກໍ່ອຸປະທິ ໄດ້ແກ່ ຍ້ອນແນວນັ້ນ ຄືຍ້ອນຂໍ້ນັ້ນເປັນການ ຍ້ອນຂໍ້ນັ້ນເປັນເຫດ ຍ້ອນຂໍ້ນັ້ນເປັນປັດໄຈ ຍ້ອນຂໍ້ນັ້ນເປັນຕົ້ນເຫດ ຄື ເບິ່ງເຫັນໂທດນີ້ໃນອຸປະທິທັງຫຼາຍ ລວມຄວາມວ່າ ຍ້ອນແນວນັ້ນ

ຄຳວ່າ ຮູ້ຢູ່ ໄດ້ແກ່ ຮູ້ຢູ່ ຄື ຮູ້ຢູ່ ຮູ້ຊັດແຈ້ງຢູ່ ຮູ້ສະເພາະຢູ່ ແທງຕະຫຼອດຢູ່ ຄື ຮູ້ຢູ່ ຊາບຢູ່ ຮູ້ຊັດແຈ້ງຢູ່ ຮູ້ສະເພາະຢູ່ ແທງຕະຫຼອດຢູ່ວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ທຳທັງປວງເປັນອະນັດຕາ ຯລຯ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ຄຳວ່າ ບໍ່ຄວນກໍ່ອຸປະທິ ອະທິບາຍວ່າ ບໍ່ຄວນກໍ່ອຸປະທິຄືຕັນຫາ ບໍ່ຄວນກໍ່ອຸປະທິຄືທິດຖິ ບໍ່ຄວນກໍ່ອຸປະທິຄືກິເລດ ບໍ່ຄວນກໍ່ອຸປະທິຄືກຳ ບໍ່ຄວນກໍ່ອຸປະທິຄືທຸດຈະຣິດ ບໍ່ຄວນກໍ່ອຸປະທິຄືອາຫານ ບໍ່ຄວນກໍ່ອຸປະທິຄືປະຕິຄະ ບໍ່ຄວນກໍ່ອຸປະທິຄື ອຸປາທິນນະທາດ ໔ ບໍ່ຄວນກໍ່ອຸປະທິຄືອາຍະຕະນະພາຍໃນ ບໍ່ຄວນກໍ່ອຸປະທິໝວດວິນຍານ ໖ ຄື ບໍ່ຄວນໃຫ້ເກີດ ບໍ່ຄວນໃຫ້ເກີດຂຶ້ນ ບໍ່ຄວນໃຫ້ບັງເກີດ ບໍ່ຄວນໃຫ້ບັງເກີດຂຶ້ນ ລວມຄວາມວ່າ ຍ້ອນແນວນັ້ນ ບຸກຄົນຮູ້ຢູ່ ຯລຯ ບໍ່ຄວນກໍ່ອຸປະທິ

ຄຳວ່າ ທຸກ ໄດ້ແກ່ ຊາດທຸກ ຊະຣາທຸກ ພະຍາທິທຸກ ມໍຣະນະທຸກ ໂສກະປະຣິເທວະທຸກຂະໂທມະນັດອຸປາຍາດທຸກ

ຄຳວ່າ ເປັນຜູ້ມີປົກກະຕິພິຈາລະນາເຫັນ (ທຸກວ່າມີຊາດ) ເປັນແດນເກີດ ອະທິບາຍວ່າ ພິຈາລະນາເຫັນມູນ ພິຈາລະນາເຫັນເຫດ ພິຈາລະນາເຫັນຕົ້ນເຫດ ພິຈາລະນາເຫັນການເກີດ

ຂຶ້ນ ພິຈາລະນາເຫັນແດນເກີດ ພິຈາລະນາເຫັນສະມຸດຖານ ພິຈາລະນາເຫັນອາຫານ ພິຈາລະນາເຫັນອາລົມ ພິຈາລະນາເຫັນປັດໄຈ ພິຈາລະນາເຫັນເຫດເກີດແຫ່ງທຸກ

ຍານ ຕັດຮຽກວ່າ ອະນຸປັດສະນາ ໄດ້ແກ່ ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມເລືອກເຟັ້ນທຳ ສຳມາທິດຖິ

ຜູ້ໃດປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍປັນຍາເຄື່ອງພິຈາລະນາເຫັນນີ້ ຜູ້ນັ້ນຕັດຮຽກວ່າ ຜູ້ມີປົກກະຕິພິຈາລະນາເຫັນ ລວມຄວາມວ່າ ເປັນຜູ້ມີປົກກະຕິພິຈາລະນາເຫັນທຸກວ່າມີຊາດເປັນແດນເກີດ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ຜູ້ໃດແລ ບໍ່ມີປັນຍາ ຍ່ອມກໍ່ອຸປະທິ
ຜູ້ນັ້ນຈັດວ່າເປັນຄົນຈ້ຳ ຍ່ອມເຂົ້າເຖິງທຸກຢູ່ເລື້ອຍ ໆ
ຍ້ອນແນວນັ້ນ ບຸກຄົນຮູ້ຢູ່ ເປັນຜູ້ມີປົກກະຕິພິຈາລະນາເຫັນທຸກວ່າ
ມີຊາດເປັນແດນເກີດ ບໍ່ຄວນກໍ່ອຸປະທິ

[໔໑] (ທ່ານເມດຕະຄູທູນຖາມວ່າ)

ພວກຂ້າພຣະອົງໄດ້ທູນຖາມບັນຫາໃດກັບພຣະອົງ
ພຣະຜູ້ມີພຣະພາກເຈົ້າໄດ້ຕັດບອກບັນຫານັ້ນແກ່ພວກຂ້າພຣະອົງແລ້ວ
ຂ້າພຣະອົງຂໍທູນຖາມບັນຫາອື່ນຕໍ່ໄປ
ຂໍພຣະອົງໂຜດຕັດບອກບັນຫານັ້ນດ້ວຍເທີ້ນ

ນັກປາດທັງຫຼາຍ ຈະຂ້າມໂອຄະ ຊາດ ຊະຣາ
ໂສກະ ແລະປະຣິເທວະໄດ້ແນວໃດນໍ
ພຣະອົງຜູ້ເປັນພຣະມຸນີ ຂໍໂຜດຕັດແກ້ບັນຫານັ້ນ
ແກ່ຂ້າພຣະອົງໃຫ້ຊັດແຈ້ງດ້ວຍເທີ້ນ
ຍ້ອນທຳນັ້ນ ພຣະອົງຊົງຮູ້ແຈ້ງແລ້ວ (໔)

ຄຳວ່າ ພວກຂ້າພຣະອົງໄດ້ທູນຖາມບັນຫາໃດກັບພຣະອົງ ພຣະຜູ້ມີພຣະພາກເຈົ້າໄດ້ຕັດບອກບັນຫານັ້ນແກ່ພວກຂ້າພຣະອົງແລ້ວ ອະທິບາຍວ່າ ພວກຂ້າພຣະອົງໄດ້ທູນຖາມບັນຫາໃດກັບພຣະອົງ ຄື ໄດ້ທູນຂໍ ໄດ້ທູນອັນເຊີນ ໄດ້ທູນໃຫ້ຊົງປະກາດບັນຫາໃດ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຕັດບອກບັນຫານັ້ນແກ່ພວກຂ້າພຣະອົງແລ້ວ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບ ຊີ້ແຈ່ງ ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດແລ້ວ ລວມຄວາມວ່າ ພວກຂ້າພຣະອົງໄດ້ທູນຖາມບັນຫາໃດກັບພຣະອົງ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບບັນຫານັ້ນແກ່ພວກຂ້າພຣະອົງແລ້ວ

ຄຳວ່າ ຂ້າພຣະອົງຂໍທູນຖາມບັນຫາອື່ນຕໍ່ໄປ ຂໍພຣະອົງໂຜດຕັດບອກບັນຫານັ້ນດ້ວຍເທີ້ນ ອະທິບາຍວ່າ ຂ້າພຣະອົງຂໍທູນຖາມບັນຫາອື່ນ ຄື ທູນຂໍບັນຫາອື່ນ ທູນອັນເຊີນບັນຫາອື່ນ ທູນໃຫ້ຊົງປະກາດບັນຫາອື່ນ ທູນຖາມໃຫ້ຍິ່ງຂຶ້ນໄປ

ຄຳວ່າ ຂໍພຣະອົງໂຜດຕັດບອກບັນຫານັ້ນດ້ວຍເທີ້ນ ອະທິບາຍວ່າ ຂໍພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດເທີ້ນ ລວມຄວາມວ່າ ຂ້າພຣະອົງຂໍທູນຖາມບັນຫາອື່ນຕໍ່ໄປ ຂໍພຣະອົງໂຜດຕັດບອກບັນຫານັ້ນດ້ວຍເທີ້ນ

ຄຳວ່າ ແນວໃດນໍ ໃນຄຳວ່າ ນັກປາດທັງຫຼາຍ ຈະຂ້າມໂອຄະ ຊາດ ຊະຣາ ໂສກະ ແລະປະຣິເທວະໄດ້ແນວໃດນໍ ເປັນຄຳຖາມດ້ວຍຄວາມສົງໄສ ເປັນຄຳຖາມດ້ວຍຄວາມຂ້ອງໃຈ ເປັນຄຳຖາມ ໘ ແງ່ ເປັນຄຳຖາມມີແງ່ມຸມຫຼາກຫຼາຍວ່າ ແນວນີ້ແມ່ນບໍ ບໍ່ແມ່ນແມ່ນບໍ ເປັນອັນໃດນໍ ເປັນແນວໃດນໍ ລວມຄວາມວ່າ ແນວໃດນໍ

ຄຳວ່າ ນັກປາດທັງຫຼາຍ ໄດ້ແກ່ ນັກປາດທັງຫຼາຍ ຄື ບັນດິດ ຜູ້ມີປັນຍາມີປັນຍາເຄື່ອງຕັດສະຣູ້ ມີຍານ ມີປັນຍາຊັດແຈ້ງ ມີປັນຍາເຄື່ອງທຳລາຍກິເລດ

ຄຳວ່າ ໂອຄະ ໄດ້ແກ່ ກາໂມຄະ ພະໂວຄະ ທິດໂຖຄະ ອະວິດໂຊຄະ

ຄຳວ່າ ຊາດ ໄດ້ແກ່ ການເກີດ ຄື ເກີດຂຶ້ນ ການກ້າວລົງ (ສູ່ທ້ອງ) ການບັງເກີດ ການບັງເກີດຂຶ້ນ ຄວາມຜາກົດແຫ່ງຂັນທັງຫຼາຍ ການໄດ້ອາຍະຕະນະໃນໝູ່ສັດນັ້ນ ໆ ຂອງສັດເຫຼົ່ານັ້ນ ໆ

ຄຳວ່າ ຊະຣາ ໄດ້ແກ່ ຄວາມແກ່ ຄື ຄວາມຊຸດໂຊມ ຄວາມເປັນຜູ້ມີແຂ້ວຫຼ່ອນ ຄວາມເປັນຜູ້ມີຜົມຫງອກ ຄວາມເປັນຜູ້ມີໜັງຫ່ຽວ ຄວາມເສື່ອມອາຍຸ ຄວາມແກ່ຫງ່ອມແຫ່ງອິນຊີໃນໝູ່ສັດນັ້ນ ໆ ຂອງສັດເຫຼົ່ານັ້ນ ໆ

ຄຳວ່າ ໂສກະ ໄດ້ແກ່ ຄວາມເສົ້າໂສກ ກິຣິຍາທີ່ເສົ້າໂສກ ພາວະທີ່ເສົ້າໂສກ ຄວາມເສົ້າໂສກພາຍໃນ ຄວາມເສົ້າໂສກຫຼາຍພາຍໃນ ຄວາມໝົ່ນໄໝ້ພາຍໃນ ຄວາມຮ້ອນຮົນພາຍໃນ ຄວາມໝົ່ນໄໝ້ແຫ່ງຈິດ ຄວາມທຸກໃຈ ລູກສອນຄືຄວາມເສົ້າໂສກຂອງຜູ້ທີ່ຖືກຄວາມເສຍຫາຍຂອງຍາດຕິພີ່ນ້ອງກະທົບແດ່ ຖືກຄວາມເສຍຫາຍແຫ່ງໂພຄະຊັບກະທົບແດ່ ຖືກຄວາມເສຍຫາຍຍ້ອນໂຣກກະທົບແດ່ ຖືກສີນວິບັດກະທົບແດ່ ຖືກທິດຖິວິບັດກະທົບແດ່ ພົບພໍ້ກັບຄວາມເສຍຫາຍອື່ນນອກຈາກທີ່ກ່າວມາແລ້ວກະທົບແດ່ ຖືກເຫດແຫ່ງທຸກອື່ນນອກຈາກທີ່ກ່າວແລ້ວກະທົບແດ່

ຄຳວ່າ ປະຣິເທວະ ໄດ້ແກ່ ຄວາມຈົ່ມເພີ້ ຄວາມຄ່ຳຄວນ ກິຣິຍາທີ່ຈົ່ມເພີ້ ກິຣິຍາທີ່ຄ່ຳຄວນ ພາວະທີ່ຈົ່ມເພີ້ ພາວະທີ່ຄ່ຳຄວນ ການເວົ້າພ່ານ ການເວົ້າເພີ້ ການເວົ້າເພີ້ເຈີ້ ຄວາມພ່ຳເພີ້ ກິຣິຍາທີ່ພ່ຳເພີ້ ພາວະທີ່ພ່ຳເພີ້ ຂອງຜູ້ຖືກຄວາມເສຍຫາຍທາງຍາດຕິພີ່ນ້ອງກະທົບແດ່ ຖືກທິດຖິວິບັດກະທົບແດ່ ພົບພໍ້ກັບຄວາມເສຍຫາຍອື່ນນອກຈາກທີ່ກ່າວມາແລ້ວກະທົບແດ່ ຖືກເຫດແຫ່ງທຸກອື່ນນອກຈາກທີ່ກ່າວມາແລ້ວກະທົບແດ່

ຄຳວ່າ ນັກປາດທັງຫຼາຍ ຈະຂ້າມໂອຄະ ຊາດ ຊະຣາ ໂສກະ ແລະປະຣິເທວະໄດ້ແນວໃດນໍ ອະທິບາຍວ່າ ນັກປາດທັງຫຼາຍຈະຂ້າມ ຄື ຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍໂອຄະ ຊາດ ຊະຣາ ໂສກະ ແລະປະຣິເທວະໄດ້ແນວໃດ ລວມຄວາມວ່າ ນັກປາດທັງຫຼາຍ ຈະຂ້າມໂອຄະ ຊາດ ຊະຣາ ໂສກະ ແລະປະຣິເທວະໄດ້ແນວໃດນໍ

ຄຳວ່າ ບັນຫານັ້ນ ໃນຄຳວ່າ ພຣະອົງຜູ້ເປັນພຣະມຸນີ ຂໍໂຜດຕັດແກ້ບັນຫານັ້ນແກ່ຂ້າພຣະອົງໃຫ້ຊັດແຈ້ງດ້ວຍເທີ້ນ ອະທິບາຍວ່າ ຂ້າພຣະອົງທູນຖາມ ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດບັນຫາໃດ (ຂໍໂຜດຕັດແກ້ບັນຫານັ້ນ)

## ວ່າດ້ວຍໂມເນີຍຍະທຳ ໓ ປະການ

ຄຳວ່າ ພຣະມຸນີ ອະທິບາຍວ່າ ຍານທ່ານຮຽກວ່າ ໂມນະ ໄດ້ແກ່ ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ໆລໆ ຄວາມບໍ່ຫຼົງງົມງວາຍ ຄວາມເລືອກເຟັ້ນທຳ ສຳມາທິດຖິ

ພຣະຜູ້ມີພຣະພາກເຈົ້າຊົງປະກອບດ້ວຍຍານນັ້ນ ຈຶ່ງຊື່ວ່າພຣະມຸນີ ຄື ຜູ້ຊົງບັນລຸໂມນະຍານແລ້ວ ໂມເນີຍຍະທຳ (ທຳທີ່ເຮັດໃຫ້ເປັນມຸນີ) ມີ ໓ ປະການ ຄື

໑. ໂມເນີຍຍະທຳທາງ ກາຍ
໒. ໂມເນີຍຍະທຳທາງ ວາຈາ
໓. ໂມເນີຍຍະທຳທາງ ໃຈ

ໂມເນີຍຍະທຳທາງກາຍ ເປັນແນວໃດ?

ຄື ການລະກາຍທຸດຈະຣິດ ໓ ຢ່າງ ຊື່ວ່າໂມເນີຍຍະທຳທາງກາຍ ກາຍສຸດຈະຣິດ ໓ ຢ່າງ ຊື່ວ່າໂມເນີຍຍະທຳທາງກາຍ ຍານມີກາຍເປັນອາລົມ ຊື່ວ່າໂມເນີຍຍະທຳທາງກາຍ ກາຍປະຣິນຍາ (ການກຳນົດຮູ້ກາຍ) ຊື່ວ່າໂມເນີຍຍະທຳທາງກາຍ ມັກທີ່ປະກອບດ້ວຍປະຣິນຍາ ຊື່ວ່າໂມເນີຍຍະທຳທາງກາຍ ການລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນກາຍ ຊື່ວ່າໂມເນີຍຍະທຳທາງກາຍ ຄວາມດັບແຫ່ງກາຍສັງຂານ ການບັນລຸຈະຕຸດຖະຊານ ຊື່ວ່າໂມເນີຍຍະທຳທາງກາຍ ນີ້ຊື່ວ່າໂມເນີຍຍະທຳທາງກາຍ

ໂມເນີຍຍະທຳທາງວາຈາ ເປັນແນວໃດ?

ຄື ການລະວະຈີທຸດຈະຣິດ ໔ ຢ່າງ ຊື່ວ່າໂມເນີຍຍະທຳທາງວາຈາ ວະຈີສຸດຈະຣິດ ໔ ຢ່າງ ຊື່ວ່າໂມເນີຍຍະທຳທາງວາຈາ ຍານມີວາຈາເປັນອາລົມ ຊື່ວ່າໂມເນີຍຍະທຳທາງວາຈາ ວາຈາປະຣິນຍາ (ການກຳນົດຮູ້ວາຈາ) ຊື່ວ່າໂມເນີຍຍະທຳທາງວາຈາ ມັກທີ່ປະກອບດ້ວຍປະຣິນຍາ ຊື່ວ່າໂມເນີຍຍະທຳທາງວາຈາ ການລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນວາຈາ ຊື່

ວ່າໂມເນີຍຍະທຳທາງວາຈາ ຄວາມດັບແຫ່ງວະຈີສັງຂານ ການບັນລຸທຸຕິຍະຊານ ຊື່ວ່າໂມເນີຍຍະທຳທາງວາຈາ ນີ້ຊື່ວ່າໂມເນີຍຍະທຳທາງວາຈາ

ໂມເນີຍຍະທຳທາງໃຈ ເປັນແນວໃດ?

ຄື ການລະມະໂນທຸດຈະຣິດ ໓ ຢ່າງ ຊື່ວ່າໂມເນີຍຍະທຳທາງໃຈ ມະໂນສຸດຈະຣິດ ໓ ຢ່າງ ຊື່ວ່າໂມເນີຍຍະທຳທາງໃຈ ຍານມີໃຈເປັນອາລົມ ຊື່ວ່າໂມເນີຍຍະທຳທາງໃຈ ຈິດຕະປະຣິນຍາ (ການກຳນົດຮູ້ຈິດ) ຊື່ວ່າໂມເນີຍຍະທຳທາງໃຈ ມັກທີ່ປະກອບດ້ວຍປະຣິນຍາ ຊື່ວ່າໂມເນີຍຍະທຳທາງໃຈ ການລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນຈິດ ຊື່ວ່າໂມເນີຍຍະທຳທາງໃຈ ຄວາມດັບແຫ່ງຈິດຕະສັງຂານ ການບັນລຸສັນຍາເວທະຍິຕະນິໂຣດ ຊື່ວ່າ ໂມເນີຍຍະທຳທາງໃຈ ນີ້ຊື່ວ່າໂມເນີຍຍະທຳທາງໃຈ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວ້ວ່າ)

ບັນດິດທັງຫຼາຍ ຮຽກບຸກຄົນຜູ້ເປັນມຸນີທາງກາຍ
ເປັນມຸນີທາງວາຈາ ເປັນມຸນີທາງໃຈ ຜູ້ບໍ່ມີອາສະວະ
ວ່າເປັນມຸນີຜູ້ສົມບູນດ້ວຍໂມເນີຍຍະທຳ ລະກິເລດທັງປວງໄດ້
ບັນດິດທັງຫຼາຍ ຮຽກບຸກຄົນຜູ້ເປັນມຸນີທາງກາຍ
ເປັນມຸນີທາງວາຈາ ເປັນມຸນີທາງໃຈ ຜູ້ບໍ່ມີອາສະວະ
ວ່າເປັນມຸນີຜູ້ສົມບູນດ້ວຍໂມເນີຍຍະທຳ ລ້າງບາບໄດ້ແລ້ວ

ມຸນີຜູ້ປະກອບດ້ວຍໂມເນີຍຍະທຳ ໓ ປະການເຫຼົ່ານີ້ ມີ ໖ ຈຳພວກ ຄື

(໑) ອາຄາຣະມຸນີ (໒) ອະນາຄາຣະມຸນີ (໓) ເສຂະມຸນີ (໔) ອະເສຂະມຸນີ (໕) ປັດເຈກະມຸນີ (໖) ມຸນີມຸນີ

ອາຄາຣະມຸນີ ເປັນແນວໃດ?

ຄື ບຸກຄົນຜູ້ຄອງເຮືອນ ເຫັນທາງ (ນິບພານ) ແລ້ວ ຮູ້ແຈ້ງຫຼັກຄຳສອນແລ້ວ ເຫຼົ່ານີ້ຊື່ວ່າອາຄາຣະມຸນີ

ອະນາຄາຣະມຸນີ ເປັນແນວໃດ?

ຄື ບຸກຄົນຜູ້ເປັນບັນພະຊິດ ເຫັນທາງ (ນິບພານ) ແລ້ວ ຮູ້ແຈ້ງຫຼັກຄຳສອນແລ້ວ ເຫຼົ່ານີ້ຊື່ວ່າອະນາຄາຣະມຸນີ

ພຣະເສຂະ ໗ ຈຳພວກ ຊື່ວ່າ ເສຂະມຸນີ

ພຣະອະຣະຫັນທັງຫຼາຍ ຊື່ວ່າ ອະເສຂະມຸນີ

ພຣະປັດເຈກພຸດທະເຈົ້າທັງຫຼາຍ ຊື່ວ່າ ປັດເຈກມຸນີ

ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າທັງຫຼາຍ ຕັດຮຽກວ່າມຸນີມຸນີ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວ້ວ່າ)

ບຸກຄົນໂງ່ຈ້າບໍ່ຮູ້ຈັກອັນໃດ ພຽງແຕ່ນັ່ງນິ່ງ ໆ ບໍ່ຊື່ວ່າເປັນມຸນີເລີຍ
ສ່ວນບຸກຄົນຜູ້ສະຫຼາດເລືອກຊັ່ງເອົາແຕ່ສິ່ງທີ່ດີ ລະຖິ້ມສິ່ງທີ່ຊົ່ວ
ເໝືອນບຸກຄົນຊັ່ງສິ່ງຂອງ ຈຶ່ງຈະຊື່ວ່າເປັນມຸນີແທ້
ຜູ້ທີ່ຮູ້ໂລກທັງ ໒ ກໍຮຽກວ່າ ເປັນມຸນີ (ເຊັ່ນກັນ)
ຜູ້ຮູ້ທຳທັງຂອງອະສັດຕະບຸຣຸດແລະສັດຕະບຸຣຸດ
ທັງພາຍໃນແລະພາຍນອກໃນໂລກທັງປວງ
ເທວະດາແລະມະນຸດບູຊາແລ້ວ ກ້າວລ່ວງກິເລດເຄື່ອງຂ້ອງ
ແລະຕັນຫາເໝືອນຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ຄຳວ່າ ແກ້ (ບັນຫານັ້ນ) ໃຫ້ຊັດແຈ້ງ ໄດ້ແກ່ ຂໍພຣະອົງໂຜດຕັດບອກ ຄື ໂຜດສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດບັນຫານັ້ນໃຫ້ຊັດແຈ້ງ ລວມຄວາມວ່າ ພຣະອົງຜູ້ຊົງເປັນພຣະມຸນີ ຂໍໂຜດຕັດແກ້ບັນຫານັ້ນແກ່ຂ້າພຣະອົງໃຫ້ຊັດແຈ້ງດ້ວຍເທີ້ນ

ຄຳວ່າ ຍ້ອນທຳນັ້ນ ພຣະອົງຊົງຮູ້ແຈ້ງແລ້ວ ອະທິບາຍວ່າ ຍ້ອນພຣະອົງຊົງຮູ້ ຄື ທຽບ ຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວ ລວມຄວາມວ່າ ຍ້ອນທຳນັ້ນ ພຣະອົງ ຊົງຮູ້ແຈ້ງແລ້ວ ດ້ວຍເຫດນັ້ນ ພາມນັ້ນ ຈຶ່ງຂາບທູນວ່າ

ພວກຂ້າພຣະອົງໄດ້ທູນຖາມບັນຫາໃດກັບພຣະອົງ
ພຣະຜູ້ມີພຣະພາກເຈົ້າໄດ້ຕັດບອກບັນຫານັ້ນແກ່ພວກຂ້າພຣະອົງແລ້ວ
ຂ້າພຣະອົງຂໍທູນຖາມບັນຫາອື່ນຕື່ມອີກ
ຂໍພຣະອົງໂຜດຕັດບອກບັນຫານັ້ນດ້ວຍເທີ້ນ
ນັກປາດທັງຫຼາຍ ຈະຂ້າມໂອຄະ ຊາດ ຊະຣາ
ໂສກະ ແລະປະຣິເທວະໄດ້ແນວໃດນໍ
ພຣະອົງຜູ້ເປັນພຣະມຸນີ ຂໍໂຜດຕັດແກ້ບັນຫານັ້ນ
ແກ່ຂ້າພຣະອົງໃຫ້ຊັດແຈ້ງດ້ວຍເທີ້ນ
ຍ້ອນທຳນັ້ນ ພຣະອົງຊົງຮູ້ແຈ້ງແລ້ວ

[໔໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດຕະຄູ)

ບຸກຄົນຮູ້ແຈ້ງທຳໃດແລ້ວ ມີສະຕິທ່ຽວໄປຢູ່
ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້
ເຮົາຈັກກ່າວທຳ (ນັ້ນ) ທີ່ຮູ້ປະຈັກດ້ວຍຕົນເອງ
ໃນທຳທີ່ເຮົາເຫັນແລ້ວ ແກ່ທ່ານ (໕)

ຄຳວ່າ ທຳ ໃນຄຳວ່າ ເຮົາຈັກກ່າວທຳຯລຯແກ່ທ່ານ ອະທິບາຍວ່າ ເຮົາຈັກກ່າວ ຄື ຈັກບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດພົມມະຈັນ ທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ນິບພານ ແລະປະຕິປະທາເຄື່ອງດຳເນີນໄປສູ່ນິບພານ ລວມຄວາມວ່າ ເຮົາຈັກກ່າວທຳຯລຯແກ່ທ່ານ

ຄຳວ່າ ເມດຕະຄູ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ໃນທຳທີ່ເຮົາເຫັນແລ້ວ ໃນຄຳວ່າ ທີ່ຮູ້ປະຈັກດ້ວຍຕົນເອງ ໃນທຳທີ່ເຮົາເຫັນແລ້ວ ອະທິບາຍວ່າ ໃນທຳທີ່ເຮົາໄດ້ເຫັນແລ້ວ ຄື ໃນທຳທີ່ໄດ້ຮູ້ແລ້ວ ໃນທຳທີ່ໄດ້ທຽບຄຽງແລ້ວ ໃນທຳທີ່ໄດ້ພິຈາລະນາແລ້ວ ໃນທຳທີ່ເຮັດໃຫ້ແຈ້ງແລ້ວ ໃນທຳທີ່ເຮັດໃຫ້ກະຈ່າງແຈ້ງແລ້ວ ໄດ້ແກ່ ໃນທຳທີ່ເຮົາໄດ້ເຫັນແລ້ວ ຄື ໃນທຳທີ່ໄດ້ຮູ້ແລ້ວ ໃນທຳທີ່ໄດ້ທຽບຄຽງແລ້ວ ໃນທຳທີ່ໄດ້ພິຈາລະນາແລ້ວ ໃນທຳທີ່ເຮັດໃຫ້ແຈ້ງແລ້ວ ໃນທຳທີ່ເຮັດໃຫ້ກະຈ່າງແລ້ວວ່າ ສັງຂານທັງປວງບໍ່ທ່ຽງຯລຯ ໄດ້ແກ່ ໃນທຳທີ່ເຮົາໄດ້ເຫັນແລ້ວ ຄື ໃນທຳທີ່ໄດ້ຮູ້ແລ້ວ ໃນທຳທີ່ໄດ້ທຽບຄຽງແລ້ວ ໃນທຳທີ່ໄດ້ພິຈາລະນາແລ້ວ ໃນທຳທີ່ເຮັດໃຫ້ແຈ້ງແລ້ວ ໃນທຳທີ່ເຮັດໃຫ້ກະຈ່າງແລ້ວວ່າ ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ລວມຄວາມວ່າ ເຮົາຈັກກ່າວ ຯລຯ ໃນທຳທີ່ເຮົາເຫັນແລ້ວ ແນວນີ້ແດ່

ອີກໄນໜຶ່ງ ເຮົາຈັກກ່າວເຖິງທຸກໃນທຸກທີ່ໄດ້ເຫັນແລ້ວ ຈັກກ່າວເຖິງສະມຸໄທໃນສະມຸໄທທີ່ໄດ້ເຫັນແລ້ວ ຈັກກ່າວເຖິງມັກໃນມັກທີ່ໄດ້ເຫັນແລ້ວ ຈັກກ່າວເຖິງນິໂຣດໃນນິໂຣດທີ່ໄດ້ເຫັນແລ້ວ ລວມຄວາມວ່າ ເຮົາຈັກກ່າວ ຯລຯ ໃນທຳທີ່ເຮົາເຫັນແລ້ວ ແນວນີ້ແດ່

ອີກໄນໜຶ່ງ (ເຮົາຈັກກ່າວທຳ) ທີ່ເຫັນໄດ້ເອງ ບໍ່ຂຶ້ນຢູ່ກັບການເວລາ ເຊີນມາເບິ່ງໄດ້ ຄວນນ້ອມເຂົ້າມາໃນຕົນ ວິນຍູຊົນເພິ່ງຮູ້ໄດ້ດ້ວຍຕົນເອງ ໃນທຳທີ່ເຮົາເຫັນແລ້ວ ລວມຄວາມວ່າ ເຮົາຈັກກ່າວ ຯລຯ ໃນທຳທີ່ເຮົາເຫັນແລ້ວ ແນວນີ້ແດ່ ລວມຄວາມວ່າ ໃນທຳທີ່ເຮົາເຫັນແລ້ວ

ຄຳວ່າ ທີ່ຮູ້ປະຈັກດ້ວຍຕົນເອງ ອະທິບາຍວ່າ ເຮົາຈັກກ່າວເຖິງທຳທີ່ຮູ້ດ້ວຍຕົນເອງ ທຳທີ່ປະຈັກແກ່ຕົນເອງ ບໍ່ແມ່ນໂດຍອາການເຊື່ອຜູ້ອື່ນວ່າທຳນີ້ເປັນດັ່ງນີ້ ໆ ບໍ່ແມ່ນໂດຍການເລົ່າລືບໍ່ແມ່ນໂດຍຖືສືບ ໆ ກັນມາ ບໍ່ແມ່ນໂດຍການອ້າງຕຳລາ ບໍ່ແມ່ນໂດຍຕັກກະ ບໍ່ແມ່ນໂດຍການອະນຸມານ ບໍ່ແມ່ນໂດຍການຄິດຕອງຕາມແນວເຫດຜົນ ບໍ່ແມ່ນຍ້ອນເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ລວມຄວາມວ່າ ທີ່ຮູ້ປະຈັກດ້ວຍຕົນເອງ ໃນທຳທີ່ເຮົາເຫັນແລ້ວ

ຄຳວ່າ ບຸກຄົນຮູ້ແຈ້ງທຳໃດແລ້ວ ມີສະຕິທ່ຽວໄປຢູ່ ອະທິບາຍວ່າ ບຸກຄົນຮູ້ແຈ້ງທຳໃດແລ້ວ ຄື ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວ ໄດ້ແກ່ ບຸກຄົນຮູ້ແຈ້ງແລ້ວ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງແຈ້ງ ເຮັດໃຫ້ຊັດແຈ້ງແລ້ວວ່າ ສັງຂານທັງປວງບໍ່

ທ່ຽງ ຯລຯ ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ຄຳວ່າ ມີສະຕິ ໄດ້ແກ່ ມີສະຕິດ້ວຍເຫດ ໔ ຢ່າງ ຄື (໑) ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ ຯລຯ ບຸກຄົນນັ້ນ ພຣະຜູ້ມີພຣະພາກເຈົ້າຕັດ ຮຽກວ່າ ມີສະຕິ

ຄຳວ່າ ທ່ຽວໄປຢູ່ ໄດ້ແກ່ ທ່ຽວໄປ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ບຸກຄົນຮູ້ແຈ້ງທຳໃດແລ້ວ ມີສະຕິທ່ຽວໄປຢູ່

ຄຳວ່າ ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້ ອະທິບາຍວ່າ ຕັນຫາຊື່ວ່າ

ວິສັດຕິກາ ຄື ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄືໂລພະ

## ວ່າດ້ວຍຕັນຫາຊື່ວ່າວິສັດຕິກາ

ຄຳວ່າ ວິສັດຕິກາ ອະທິບາຍວ່າ ຕັນຫາຊື່ວ່າວິສັດຕິກາ ຍ້ອນມີຄວາມໝາຍແນວໃດ ຕັນຫາຊື່ວ່າວິສັດຕິກາ ຍ້ອນແຜ່ໄປ ຊື່ວ່າວິສັດຕິກາ ຍ້ອນຊ່ານໄປ ຊື່ວ່າວິສັດຕິກາ ຍ້ອນຂະຫຍາຍໄປ ຊື່ວ່າວິສັດຕິກາ ຍ້ອນບໍ່ສະໝ່ຳສະເໝີ ຊື່ວ່າວິສັດຕິກາ ຍ້ອນຄອບງຳ ຊື່ວ່າວິສັດຕິກາ ຍ້ອນສະທ້ອນໄປ ຊື່ວ່າວິສັດຕິກາ ຍ້ອນເປັນຕົວການໃຫ້ເວົ້າຜິດ ຊື່ວ່າວິສັດຕິກາ ຍ້ອນມີຮາກເປັນພິດ ຊື່ວ່າວິສັດຕິກາ ຍ້ອນມີໝາກເປັນພິດ ຊື່ວ່າວິສັດຕິກາ ຍ້ອນເປັນຕົວການໃຫ້ບໍລິໂພກສິ່ງມີພິດ

ອີກໄນໜຶ່ງ ຕັນຫານັ້ນແຜ່ໄປ ຊ່ານໄປ ຂະຫຍາຍໄປໃນຮູບ ສຽງ ກິ່ນ ຣົດ ໂຜດຖັບພະຕະກູນ ໝູ່ຄະນະ ອາວາດ ລາບ ຍົດ ສັນເສີນ ສຸກ ຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານ ກາມທາດ ຮູບທາດ ອະຮູບທາດ ກາມພົບ ຮູບພົບ ອະຮູບພົບ ສັນຍາພົບ ອະສັນຍາພົບ ເນວະສັນຍານາສັນຍາພົບ ເອກະໂວກາຣະພົບ ຈະຕຸໂວກາຣະພົບ ປັນຈະໂວກາຣະພົບ ອະດີດ ອະນາຄົດ ປັດຈຸບັນ ຮູບທີ່ເຫັນແລ້ວ ສຽງທີ່ໄດ້ຍິນແລ້ວ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ແລ້ວ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ດັ່ງນັ້ນ ຈຶ່ງຊື່ວ່າວິສັດຕິກາ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ

ຄຳວ່າ ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້ ອະທິບາຍວ່າ ຜູ້ມີສະຕິ ເພິ່ງຂ້າມ ຄືເພິ່ງຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້ ລວມຄວາມວ່າ ເພິ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາໃນໂລກໄດ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດຕະຄູ)

ບຸກຄົນຮູ້ແຈ້ງທຳໃດແລ້ວ ມີສະຕິທ່ຽວໄປຢູ່
ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້

ເຮົາຈັກກ່າວທຳ (ນັ້ນ) ທີ່ຮູ້ປະຈັກດ້ວຍຕົນເອງ
ໃນທຳທີ່ເຮົາເຫັນແລ້ວ ແກ່ທ່ານ

[໔໘] (ທ່ານເມດຕະຄູທູນຖາມວ່າ)

ຂ້າແຕ່ ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຂ້າພຣະອົງພໍໃຈທຳອັນສູງສຸດນັ້ນທີ່ບຸກຄົນຮູ້ແຈ້ງແລ້ວ
ມີສະຕິທ່ຽວໄປຢູ່ ເພື່ອຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້ (໖)

ຄຳວ່າ ນັ້ນ ໃນຄຳວ່າ ຂ້າພຣະອົງພໍໃຈທຳອັນສູງສຸດນັ້ນ ໄດ້ແກ່ ພຣະດຳຣັດ ຄຳທີ່ເປັນແນວທາງ ເທດສະໜາ ຄຳສັ່ງສອນ ຄຳພ່ຳສອນ

ຄຳວ່າ ພໍໃຈ ໄດ້ແກ່ ພໍໃຈ ຄື ເບີກບານໃຈ ອະນຸໂມທະນາ ຕ້ອງການ ຍິນດີ ທູນຂໍ ປາຖະໜາ ມຸ້ງໝາຍ ມຸ້ງຫວັງ ລວມຄວາມວ່າ ຂ້າພຣະອົງພໍໃຈທຳອັນສູງສຸດນັ້ນ

## ວ່າດ້ວຍພຣະຜູ້ມີພຣະພາກເຈົ້າຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ຄຳວ່າ ຂ້າແຕ່ ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ໃນຄຳວ່າ ຂ້າແຕ່ ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ (ຂ້າພຣະອົງພໍໃຈ) ທຳອັນສູງສຸດ ອະທິບາຍວ່າ

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າ ຊົງສະແຫວງຫາຄຸນຍິ່ງໃຫຍ່ ຍ້ອນມີຄວາມໝາຍວ່າແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາສີນຂັນໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາສະມາທິຂັນໃຫຍ່ ฯລฯ ປັນຍາຂັນໃຫຍ່ ฯລฯ ວິມຸດຕິຂັນໃຫຍ່ ฯລฯ ວິມຸດຕິຍານະທັດສະນະຂັນໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງທຳລາຍກອງຄວາມມືດໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງທຳລາຍຄວາມວິປະລາດໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງຖອນລູກສອນຄືຕັນຫາໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງປົດເປື້ອງໂຄງທິດຖິໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງກຳຈັດທຸງຄືມານະໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງເຂົ້າໄປສະງົບອະພິສັງຂານໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງປິດກັ້ນໂອຄະໃຫຍ່ ຈຶ່ງຊື່ວ່າ ຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງວາງພາຣະໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງຕັດສັງສາຣະວັດໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງດັບຄວາມເດືອດຮ້ອນໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງຣະງັບຄວາມຮ້ອນຮົນໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງຍົກທຸງຄືທຳໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາສະຕິປັດຖານໃຫຍ່ ຯລຯ ສຳມັບປະທານໃຫຍ່ ຯລຯ ອິດທິບາດໃຫຍ່ ຯລຯ ອິນຊີໃຫຍ່ ຯລຯ ພະລະໃຫຍ່ ຯລຯ ໂພດຊົງໃຫຍ່ ຯລຯ ອະຣິຍະມັກມີອົງ ໘ ໃຫຍ່ ຯລຯ ປະຣະມັດຖະອະມະຕະນິບພານໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ທີ່ເຫຼົ່າສັດຜູ້ມະເຫສັກສະແຫວງຫາ ຄົ້ນຫາ ເສາະຫາວ່າ ພຣະພຸດທະເຈົ້າປະທັບຢູ່ບ່ອນໃດ ພຣະຜູ້ມີພຣະພາກປະທັບຢູ່ໃສ ພຣະຜູ້ຊົງເປັນເທບຍິ່ງກວ່າເທບປະທັບຢູ່ບ່ອນໃດ ພຣະຜູ້ຊົງອົງອາດກວ່ານໍຣະຊົນປະທັບຢູ່ບ່ອນໃດ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ຄຳວ່າ ທຳອັນສູງສຸດ ອະທິບາຍວ່າ ອະມະຕະນິບພານ ຕັດຮຽກວ່າ ທຳອັນສູງສຸດ ໄດ້ແກ່ ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ

ຄຳວ່າ ສູງສຸດ ໄດ້ແກ່ ທຳອັນເລີດ ປະເສີດ ວິເສດສຸດ ຊັ້ນແນວໜ້າ ສູງສຸດ ປະເສີດ ລວມຄວາມວ່າ ທຳອັນສູງສຸດ

ຄຳວ່າ ທີ່ບຸກຄົນຮູ້ແຈ້ງແລ້ວ ມີສະຕິທ່ຽວໄປຢູ່ ອະທິບາຍວ່າ ທີ່ບຸກຄົນຮູ້ແຈ້ງແລ້ວ ຄືທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ

ໄດ້ແກ່ ທີ່ບຸກຄົນຮູ້ແຈ້ງແລ້ວ ຄືທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ຄຳວ່າ ມີສະຕິ ໄດ້ແກ່ ມີສະຕິດ້ວຍເຫດ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ ຯລຯ ໃນເວທະນາທັງຫຼາຍ ຯລຯ ໃນຈິດ

໔. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາທຳໃນທຳທັງຫຼາຍ ຯລຯ ບຸກຄົນນັ້ນ ພຣະຜູ້ມີພຣະພາກເຈົ້າ ຕັດຮຽກວ່າ ມີສະຕິ

ຄຳວ່າ ທ່ຽວໄປຢູ່ ໄດ້ແກ່ ທ່ຽວໄປ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ທີ່ບຸກຄົນຮູ້ແຈ້ງແລ້ວ ມີສະຕິທ່ຽວໄປຢູ່

ຄຳວ່າ ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້ ອະທິບາຍວ່າ ຕັນຫາ ຕັດ ຮຽກວ່າ ວິສັດຕິກາ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຄຳວ່າ ວິສັດຕິກາ ອະທິບາຍວ່າ ຕັນຫາຊື່ວ່າວິສັດຕິກາ ຍ້ອນມີຄວາມໝາຍແນວໃດ ຯລຯ ຊ່ານໄປ ຂະຫຍາຍໄປ ຈຶ່ງຊື່ວ່າວິສັດຕິກາ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ຯລຯ ອາຍະຕະນະໂລກ

ຄຳວ່າ ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້ ອະທິບາຍວ່າ ຕັນຫານີ້ ທີ່ຊື່ວ່າວິສັດຕິກາໃນໂລກ ບຸກຄົນເປັນຜູ້ມີສະຕິເພິ່ງຂ້າມ ຄື ເພິ່ງຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້ ລວມຄວາມວ່າ ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາ ໃນໂລກໄດ້ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ຂ້າແຕ່ ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຂ້າພຣະອົງພໍໃຈທຳອັນສູງສຸດນັ້ນທີ່ບຸກຄົນຮູ້ແຈ້ງແລ້ວ
ມີສະຕິທ່ຽວໄປຢູ່ ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້

[໔໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດຕະຄູ)

ທ່ານຮູ້ທຳແນວໃດແນວໜຶ່ງ
ເຊິ່ງເປັນທຳຊັ້ນສູງ ຊັ້ນຕ່ຳແລະຊັ້ນກາງ
ທ່ານຈົ່ງບັນເທົາຄວາມເພີດເພີນ ຄວາມຖືໝັ້ນ
ແລະວິນຍານໃນທຳເຫຼົ່ານີ້ສາ ບໍ່ເພິ່ງຕັ້ງຢູ່ໃນພົບ (໗)

ຄໍາວ່າ ທ່ານຮູ້ທໍາແນວໃດແນວໜຶ່ງ ອະທິບາຍວ່າ ທ່ານຮູ້ ຄື ຮູ້ ຮູ້ຊັດແຈ້ງ ຮູ້ສະເພາະແທງຕະຫຼອດທໍາແນວໃດແນວໜຶ່ງ ລວມຄວາມວ່າ ທ່ານຮູ້ທໍາແນວໃດແນວໜຶ່ງ

ຄໍາວ່າ ເມດຕະຄູ ເປັນຄໍາທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄໍາວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄໍາກ່າວໂດຍຄວາມເຄົາລົບ ຯລຯ ຄໍາວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດຕະຄູ

## ວ່າດ້ວຍທໍາຊັ້ນສູງຊັ້ນຕໍ່າແລະຊັ້ນກາງ

ຄໍາວ່າ ຊັ້ນສູງ ຊັ້ນຕໍ່າແລະຊັ້ນກາງ ອະທິບາຍວ່າ ອະນາຄົດ ຕັດຮຽກວ່າ ຊັ້ນສູງ ອະດີດ ຕັດຮຽກວ່າ ຊັ້ນຕໍ່າ ປັດຈຸບັນ ຕັດຮຽກວ່າ ຊັ້ນກາງ ເທວະໂລກ ຕັດຮຽກວ່າ ຊັ້ນສູງ ນິຣະຍະໂລກ ຕັດຮຽກວ່າ ຊັ້ນຕໍ່າ ມະນຸດໂລກ ຕັດຮຽກວ່າ ຊັ້ນກາງ

ອີກໄນໜຶ່ງ ກຸສົນທໍາ ຕັດຮຽກວ່າ ຊັ້ນສູງ ອະກຸສົນທໍາ ຕັດຮຽກວ່າ ຊັ້ນຕໍ່າ ອັບພະຍາກະຕະທໍາ ຕັດຮຽກວ່າ ຊັ້ນກາງ

ອະຮູບທາດ ຕັດຮຽກວ່າ ຊັ້ນສູງ ກາມທາດ ຕັດຮຽກວ່າ ຊັ້ນຕໍ່າ ຮູບທາດ ຕັດ ຮຽກວ່າ ຊັ້ນກາງ

ສຸກເວທະນາ ຕັດຮຽກວ່າ ຊັ້ນສູງ ທຸກຂະເວທະນາ ຕັດຮຽກວ່າ ຊັ້ນຕໍ່າ ອະທຸກຂະມະສຸຂະເວທະນາ ຕັດຮຽກວ່າ ຊັ້ນກາງ

ເບື້ອງສູງຈາກຝາຕີນຂຶ້ນໄປຕັດຮຽກວ່າ ຊັ້ນສູງ ເບື້ອງຕໍ່າຈາກປາຍຜົມລົງມາຕັດ ຮຽກວ່າ ຊັ້ນຕໍ່າ ສູນກາງຕັດຮຽກວ່າ ຊັ້ນກາງ ລວມຄວາມວ່າ ຊັ້ນສູງ ຊັ້ນຕໍ່າແລະຊັ້ນກາງ

ຄໍາວ່າ ໃນທໍາເຫຼົ່ານີ້ ໃນຄໍາວ່າ ທ່ານຈົ່ງບັນເທົາຄວາມເພີດເພີນ ຄວາມຖືໝັ້ນແລະວິນຍານ ໃນທໍາເຫຼົ່ານີ້ສາ ບໍ່ເພິ່ງຕັ້ງຢູ່ໃນພົບ ອະທິບາຍວ່າ ໃນທໍາທີ່ເຮົາບອກແລ້ວ ສະແດງແລ້ວ ບັນຍັດແລ້ວ ກໍານົດແລ້ວ ເປີດເຜີຍແລ້ວ ຈໍາແນກແລ້ວ ເຮັດໃຫ້ງ່າຍແລ້ວ ປະກາດແລ້ວ ຕັນຫາຕັດຮຽກວ່າ ຄວາມເພີດເພີນ ຄື ຄວາມກໍາໜັດ ຄວາມກໍາໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຄໍາວ່າ ຄວາມຖືໝັ້ນ ໄດ້ແກ່ ຄວາມຖືໝັ້ນ ໒ ຢ່າງ ຄື

໑. ຄວາມຖືໝັ້ນດ້ວຍອໍານາດຕັນຫາ
໒. ຄວາມຖືໝັ້ນດ້ວຍອໍານາດທິດຖິ

ຄວາມຖືໝັ້ນດ້ວຍອໍານາດຕັນຫາ ເປັນແນວໃດ?
ຄື ຯລຯ ດ້ວຍສ່ວນແຫ່ງຕັນຫາເທົ່າໃດ ຯລຯ ນີ້ຊື່ວ່າຄວາມຖືໝັ້ນດ້ວຍອໍານາດຕັນຫາ

ຄວາມຖືໝັ້ນດ້ວຍອຳນາດທິດຖິ ເປັນແນວໃດ?

ຄື ສັກກາຍະທິດຖິມີວັດຖຸ ໒໐ ຢ່າງ ນີ້ຊື່ວ່າຄວາມຖືໝັ້ນດ້ວຍອຳນາດທິດຖິ

ຄຳວ່າ ທ່ານຈຶ່ງບັນເທົາ ຢ່າງ ແລະວິນຍານ ອະທິບາຍວ່າ ວິນຍານທີ່ປະກອບດ້ວຍປຸນຍາພິສັງຂານ ວິນຍານທີ່ປະກອບດ້ວຍອະປຸນຍາພິສັງຂານ ວິນຍານທີ່ປະກອບດ້ວຍອາເນນຊາພິສັງຂານ ທ່ານຈຶ່ງສະລັດ ບັນເທົາ ຖອນ ຖອນເສຍ ລະ ລະຖິ້ມ ລະໃຫ້ໝົດ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ເຊິ່ງຄວາມເພີດເພີນ ຄວາມຖືໝັ້ນແລະວິນຍານທີ່ປະກອບດ້ວຍອະພິສັງຂານໃນທຳເຫຼົ່ານີ້ ລວມຄວາມວ່າ ທ່ານຈຶ່ງບັນເທົາຄວາມເພີດເພີນ ຄວາມຖືໝັ້ນ ແລະວິນຍານໃນທຳເຫຼົ່ານີ້ສາ

ຄຳວ່າ ບໍ່ເພິ່ງຕັ້ງຢູ່ໃນພົບ ອະທິບາຍວ່າ

ຄຳວ່າ ພົບ ໄດ້ແກ່ ພົບ ໒ ຄື (໑) ກຳມະພົບ (໒) ພົບໃໝ່ອັນມີໃນປະຕິສົນທິ

ກຳພົບ ເປັນແນວໃດ?

ຄື ປຸນຍາພິສັງຂານ ອະປຸນຍາພິສັງຂານ ອາເນນຊາພິສັງຂານ ນີ້ຊື່ວ່າກຳພົບ

ພົບໃໝ່ອັນມີໃນປະຕິສົນທິ ເປັນແນວໃດ?

ຄື ຮູບ ເວທະນາ ສັນຍາ ສັງຂານ ວິນຍານ ອັນມີໃນປະຕິສົນທິ ນີ້ຊື່ວ່າ ພົບໃໝ່ອັນມີໃນປະຕິສົນທິ

ຄຳວ່າ ບໍ່ເພິ່ງຕັ້ງຢູ່ໃນພົບ ອະທິບາຍວ່າ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມເພີດເພີນ ຄວາມຖືໝັ້ນວິນຍານທີ່ປະກອບດ້ວຍອະພິສັງຂານ ກຳພົບແລະພົບໃໝ່ອັນມີໃນປະຕິສົນທິ ບໍ່ເພິ່ງຕັ້ງຢູ່ໃນກຳພົບ ບໍ່ເພິ່ງຕັ້ງຢູ່ ຄື ບໍ່ເພິ່ງດຳຣົງຢູ່ໃນພົບໃໝ່ອັນມີໃນປະຕິສົນທິ ລວມຄວາມວ່າ ທ່ານຈຶ່ງບັນເທົາ ຢ່າງ ແລະວິນຍານໃນທຳເຫຼົ່ານີ້ສາ ບໍ່ເພິ່ງຕັ້ງຢູ່ໃນພົບ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເມດຕະຄູ)

ທ່ານຮູ້ທຳແນວໃດແນວໜຶ່ງ
ເຊິ່ງເປັນທຳຊັ້ນສູງ ຊັ້ນຕ່ຳແລະຊັ້ນກາງ
ທ່ານຈຶ່ງບັນເທົາຄວາມເພີດເພີນ ຄວາມຖືໝັ້ນ
ແລະວິນຍານໃນທຳເຫຼົ່ານີ້ສາ ບໍ່ເພິ່ງຕັ້ງຢູ່ໃນພົບ

[໔໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ພິກຂຸຜູ້ມີປົກກະຕິຢູ່ແນວນີ້ ມີສະຕິ ບໍ່ຜະໝາດ
ຮູ້ແຈ້ງ ລະຄວາມຍຶດຖືວ່າເປັນຂອງເຮົາແລ້ວ

ທ່ຽວໄປຢູ່ ເພິ່ງລະຊາດ ຊະຣາ ໂສກະແລະປະຣິເທວະ
ອັນເປັນທຸກໃນອັດຕະພາບນີ້ໄດ້ແນ່ນອນ (໗)

ຄຳວ່າ ຜູ້ມີປົກກະຕິຢູ່ແນວນີ້ ໃນຄຳວ່າ ພິກຂຸຜູ້ມີປົກກະຕິຢູ່ແນວນີ້ ມີສະຕິ ບໍ່ຜະໝາດ ອະທິບາຍວ່າ ພິກຂຸຜູ້ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມເພີດເພີນ ຄວາມຍຶດໝັ້ນຖືໝັ້ນ ວິນຍານທີ່ປະກອບດ້ວຍອະພິສັງຂານ ກຳພົບ ແລະພົບໃໝ່ອັນມີໃນປະຕິສົນທິ ລວມຄວາມວ່າ ຜູ້ມີປົກກະຕິຢູ່ແນວນີ້

ຄຳວ່າ ມີສະຕິ ອະທິບາຍວ່າ ມີສະຕິດ້ວຍເຫດ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ ຯລຯ ພິກຂຸນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຣຽກວ່າ ມີສະຕິ

## ວ່າດ້ວຍຄວາມບໍ່ຜະໝາດ

ຄຳວ່າ ບໍ່ຜະໝາດ ອະທິບາຍວ່າ ຜູ້ເຮັດດ້ວຍຄວາມເອື້ອເຟື້ອ ເຮັດຕິດຕໍ່ ເຮັດບໍ່ຢຸດ ປະພຶດບໍ່ທຍໍ້ທຍ່ອນ ບໍ່ລະຄວາມພໍໃຈ ບໍ່ຖິ້ມເບົາ ຊື່ວ່າ ບໍ່ຜະໝາດໃນກຸສົນທຳທັງຫຼາຍ

ຄື ຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມດຸໝັ່ນ ຄວາມບໍ່ຖອຍກັບ ສະຕິສຳປະຊັນຍະ ຄວາມພຽນເປັນເຄື່ອງເຜົາກິເລດ ຄວາມພຽນແຮງກ້າ ຄວາມຕັ້ງໃຈ ຄວາມປະກອບເນືອງ ໆ ດ້ວຍຄິດວ່າ ເຮົາຈະເຮັດສີນຂັນທີ່ຍັງບໍ່ບໍລິບູນໃຫ້ສົມບູນໄດ້ໂດຍອຸບາຍແນວໃດ ຫຼື ເພິ່ງໃຊ້ປັນຍາຕາມຮັກສາສີນຂັນໃຫ້ບໍລິບູນໃນຂໍ້ນັ້ນ ໆ ໄດ້ໂດຍອຸບາຍແນວໃດ ດັ່ງນີ້ ຊື່ວ່າບໍ່ຜະໝາດໃນກຸສົນທຳທັງຫຼາຍ ຯລຯ ຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມດຸໝັ່ນ ຄວາມບໍ່ຖອຍກັບ ສະຕິສຳປະຊັນຍະ ຄວາມພຽນເປັນເຄື່ອງເຜົາກິເລດ ຄວາມພຽນແຮງກ້າ ຄວາມຕັ້ງໃຈ ຄວາມປະກອບເນືອງ ໆ ດ້ວຍຄິດວ່າ ເຮົາເພິ່ງເຮັດສະມາທິຂັນ ຯລຯ ປັນຍາຂັນ ຯລຯ ວິມຸດຕິຂັນ ຯລຯ ວິມຸດຕິຍານະທັດສະນະຂັນ ທີ່ຍັງບໍ່ບໍລິບູນໃຫ້ບໍລິບູນ ໂດຍອຸບາຍແນວໃດ ຫຼື ເພິ່ງໃຊ້ປັນຍາຕາມຮັກສາວິມຸດຕິຍານະທັດສະນະຂັນທີ່ບໍລິບູນໃນຂໍ້ນັ້ນ ໆ ໄດ້ໂດຍອຸບາຍແນວໃດ

ດັ່ງນີ້ ຊື່ວ່າບໍ່ຜະໝາດໃນກຸສົນທຳທັງຫຼາຍ ຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມດຸໝັ່ນ ຄວາມບໍ່ຖອຍກັບ ສະຕິສຳປະຊັນຍະ ຄວາມພຽນເປັນເຄື່ອງເຜົາກິເລດ ຄວາມພຽນແຮງກ້າ ຄວາມຕັ້ງໃຈ ຄວາມປະກອບເນືອງ ໆ ດ້ວຍຄິດວ່າ ເຮົາເພິ່ງກຳນົດຮູ້ທຸກທີ່ຍັງບໍ່ໄດ້ກຳນົດຮູ້ ເພິ່ງລະກິເລດທີ່ຍັງບໍ່ໄດ້ລະ ເພິ່ງຈະເລີນມັກທີ່ຍັງບໍ່ໄດ້ຈະເລີນ ຫຼືເຮັດໃຫ້ແຈ້ງນິໂຣດທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ໂດຍອຸບາຍແນວໃດ ດັ່ງນີ້ ຊື່ວ່າບໍ່ຜະໝາດໃນກຸສົນທຳທັງຫຼາຍ ລວມຄວາມວ່າ (ພິກຂຸ) ຜູ້ມີປົກກະຕິຢູ່ແນວນີ້ ມີສະຕິ ບໍ່ຜະໝາດ

ຄຳວ່າ ພິກຂຸ ໃນຄຳວ່າ ພິກຂຸ ຯລຯ ລະຄວາມຍຶດຖືວ່າເປັນຂອງເຮົາແລ້ວ ທ່ຽວໄປຢູ່ ໄດ້ແກ່ ພິກຂຸຜູ້ເປັນກັນລະຍານະປຸຖຸຊົນ ຫຼື ພິກຂຸຜູ້ເປັນພຣະເສຂະ

ຄຳວ່າ ທ່ຽວໄປຢູ່ ໄດ້ແກ່ ທ່ຽວໄປ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ

ຄຳວ່າ ຄວາມຍຶດຖືວ່າເປັນຂອງເຮົາ ໄດ້ແກ່ ຄວາມຍຶດຖືວ່າເປັນຂອງເຮົາ ໒ ຢ່າງ ຄື (໑) ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ (໒) ຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ

ພິກຂຸລະຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ ສະລັດຖິ້ມຄວາມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດທິດຖິ ຄື ລະ ສະລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມຍຶດຖືວ່າຂອງເຮົາ ລວມຄວາມວ່າ ພິກຂຸ ຯລຯ ລະຄວາມຍຶດຖືວ່າເປັນຂອງເຮົາແລ້ວ ທ່ຽວໄປຢູ່

ຄຳວ່າ ຊາດ ໃນຄຳວ່າ ຮູ້ແຈ້ງ ຯລຯ ເພິ່ງລະຊາດ ຊະຣາ ໂສກະ ແລະປະຣິເທວະອັນເປັນທຸກໃນອັດຕະພາບນີ້ໄດ້ແນ່ນອນ ໄດ້ແກ່ ການເກີດ ຄື ເກີດຂຶ້ນ ການກ້າວລົງ (ສູ່ທ້ອງ) ການບັງເກີດ ການບັງເກີດຂຶ້ນ ຄວາມຜາກົດແຫ່ງຂັນທັງຫຼາຍ ການໄດ້ອາຍະຕະນະໃນໝູ່ສັດນັ້ນ ໆ ຂອງສັດເຫຼົ່ານັ້ນ ໆ

ຄຳວ່າ ຊະຣາ ໄດ້ແກ່ ຄວາມແກ່ ຄື ຄວາມຊຸດໂຊມ ຄວາມເປັນຜູ້ມີແຂ້ວຫຼ່ອນ ຄວາມເປັນຜູ້ມີຜົມຫງອກ ຄວາມເປັນຜູ້ມີໜັງຫ່ຽວ ຄວາມເສື່ອມອາຍຸ ຄວາມແກ່ຫງ່ອມແຫ່ງອິນຊີໃນໝູ່ສັດນັ້ນ ໆ ຂອງສັດເຫຼົ່ານັ້ນ ໆ

ຄຳວ່າ ໂສກະ ໄດ້ແກ່ ຄວາມເສົ້າໂສກ ກິຣິຍາທີ່ເສົ້າໂສກ ພາວະທີ່ເສົ້າໂສກ ຄວາມເສົ້າໂສກພາຍໃນ ຄວາມເສົ້າໂສກຫຼາຍພາຍໃນ ຄວາມໝົ່ນໄໝ້ພາຍໃນ ຄວາມຮ້ອນຮົນພາຍໃນ ຄວາມໝົ່ນ ໄໝ້ແຫ່ງຈິດ ຄວາມທຸກໃຈ ລູກສອນຄືຄວາມເສົ້າໂສກ ຂອງຜູ້ທີ່ຖືກຄວາມເສຍຫາຍຂອງຍາດກະທົບແດ່ ຖືກຄວາມເສຍຫາຍແຫ່ງໂພຄະຊັບກະທົບແດ່ ຖືກຄວາມເສຍຫາຍຍ້ອນໂຣກກະທົບແດ່ ຖືກສີນວິບັດກະທົບແດ່ ຖືກທິດຖິວິບັດກະທົບແດ່ ພົບພໍ້ກັບຄວາມເສຍຫາຍອື່ນນອກຈາກທີ່ກ່າວແລ້ວແດ່ ຖືກເຫດແຫ່ງທຸກອື່ນນອກຈາກທີ່ກ່າວແລ້ວກະທົບແດ່

ຄຳວ່າ ປະຣິເທວະ ໄດ້ແກ່ ຄວາມຈົ່ມເພີ້ ຄວາມຄ່ຳຄວນ ກິຣິຍາທີ່ຈົ່ມເພີ້ ກິຣິຍາທີ່ຄ່ຳຄວນ ພາວະທີ່ຈົ່ມເພີ້ ພາວະທີ່ຄ່ຳຄວນ ການເວົ້າພ່າມ ການເວົ້າເພີ້ ການເວົ້າເພີ້ເຈີ້ ຄວາມພ່ຳເພີ້ ກິຣິຍາທີ່ພ່ຳເພີ້ ພາວະທີ່ພ່ຳເພີ້ ຂອງຜູ້ຖືກຄວາມເສຍຫາຍຂອງຍາດກະທົບແດ່ ຯລຯ ຖືກທິດຖິວິບັດກະທົບແດ່ ພົບພໍ້ກັບຄວາມເສຍຫາຍອື່ນນອກຈາກທີ່ກ່າວແລ້ວແດ່ ຖືກເຫດແຫ່ງທຸກອື່ນນອກຈາກທີ່ກ່າວແລ້ວກະທົບແດ່

ຄຳວ່າ ນີ້ ໄດ້ແກ່ ໃນຄວາມເຫັນນີ້ ຯລຯ ໃນມະນຸດໂລກນີ້

ຄຳວ່າ ຮູ້ແຈ້ງ ໄດ້ແກ່ ມີຄວາມຮູ້ແຈ້ງ ຄື ມີວິດຊາ ມີຍານ ມີປັນຍາຊັດແຈ້ງ ມີປັນຍາເຄື່ອງທຳລາຍກິເລດ

ຄຳວ່າ ອັນເປັນທຸກ ໄດ້ແກ່ ຊາດທຸກ ຯລຯ ໂສກະປະຣິເທວະທຸກຂະໂທມະນັດອຸປາຍາດທຸກ

ຄຳວ່າ ຮູ້ແຈ້ງ ຯລຯ ເພິ່ງລະຊາດ ຊະຣາ ໂສກະ ແລະປະຣິເທວະອັນເປັນທຸກໃນອັດຕະພາບນີ້ໄດ້ແນ່ນອນ ອະທິບາຍວ່າ ມີຄວາມຮູ້ແຈ້ງ ຄື ມີວິດຊາ ມີຍານ ມີປັນຍາຊັດແຈ້ງ ມີປັນຍາເຄື່ອງທຳລາຍກິເລດ ເພິ່ງລະ ຄື ເພິ່ງບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຊາດ ຊະຣາ ໂສກະ ປະຣິເທວະ ແລະທຸກໃນໂລກນີ້ເອງ ລວມຄວາມວ່າ ຮູ້ແຈ້ງ ຯລຯ ເພິ່ງລະຊາດ ຊະຣາ ໂສກະ ແລະປະຣິເທວະອັນເປັນທຸກໃນອັດຕະພາບນີ້ໄດ້ແນ່ນອນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ພິກຂຸຜູ້ມີປົກກະຕິຢູ່ແນວນີ້ ມີສະຕິ ບໍ່ຜະໝາດ
ຮູ້ແຈ້ງ ລະຄວາມຢຶດຖືວ່າເປັນຂອງເຮົາແລ້ວ
ທ່ຽວໄປຢູ່ ເພິ່ງລະຊາດ ຊະຣາ ໂສກະແລະປະຣິເທວະ
ອັນເປັນທຸກໃນອັດຕະພາບນີ້ໄດ້ແນ່ນອນ

[໔໙] (ທ່ານເມດຕະຄູທູນຖາມວ່າ)

ຂ້າພຣະອົງພໍໃຈພຣະວາຈານີ້ຂອງພຣະອົງ
ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ຂ້າແຕ່ພຣະໂຄດົມ
ທຳທີ່ປາສະຈາກອຸປະທິ ພຣະອົງຕັດໄວ້ດີແລ້ວ
ພຣະຜູ້ມີພຣະພາກເຈົ້າຊົງລະທຸກໄດ້ແລ້ວເປັນແນ່
ຍ້ອນທຳນີ້ ພຣະອົງຊົງຮູ້ແຈ້ງແລ້ວ (໙)

ຄຳວ່າ ນີ້ ໃນຄຳວ່າ ຂ້າພຣະອົງພໍໃຈພຣະວາຈານີ້ຂອງພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ໄດ້ແກ່ ພຣະວາຈາ ຄື ຄຳທີ່ເປັນແນວທາງ ເທດສະໜາ ຄຳສັ່ງສອນ ຄຳພ່ຳສອນ

ຄຳວ່າ ພໍໃຈ ໄດ້ແກ່ ພໍໃຈ ດີໃຈ ຄື ເບີກບານໃຈ ອະນຸໂມທະນາ ຕ້ອງການ ຍິນດີ ທູນຂໍ ປາຖະໜາ ມຸ້ງໝາຍ ມຸ້ງຫວັງ

ຄຳວ່າ ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ອະທິບາຍວ່າ

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາສີນຂັນໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ຯລຯ ພຣະຜູ້ຊົງອົງອາດກວ່າ ນໍຣະຊົນປະທັບຢູ່ບ່ອນໃດ ຈຶ່ງຊື່ວ່າຜູ້

ສະແຫວງຫາຄຸນອັນຍິ່ງໃຫຍ່ ລວມຄວາມວ່າ ຂ້າພຣະອົງພໍໃຈພຣະວາຈານີ້ຂອງພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ຄຳວ່າ ຕັດໄວ້ດີແລ້ວ ໃນຄຳວ່າ ຂ້າແຕ່ພຣະໂຄດົມ ທຳທີ່ປາສະຈາກອຸປະທິພຣະອົງຕັດໄວ້ດີແລ້ວ ອະທິບາຍວ່າ ຕັດໄວ້ດີແລ້ວ ຄື ຕັດບອກໄວ້ດີແລ້ວ ສະແດງໄວ້ດີແລ້ວ ບັນຍັດໄວ້ດີແລ້ວ ກຳນົດໄວ້ດີແລ້ວ ເປີດເຜີຍໄວ້ດີແລ້ວ ຈຳແນກໄວ້ດີແລ້ວ ເຮັດໃຫ້ງ່າຍໄວ້ດີແລ້ວ ປະກາດໄວ້ດີແລ້ວ ລວມຄວາມວ່າ ຕັດໄວ້ດີແລ້ວ

ຄຳວ່າ ຂ້າແຕ່ພຣະໂຄດົມ ທຳທີ່ປາສະຈາກອຸປະທິ ອະທິບາຍວ່າ ກິເລດ ຂັນ ແລະອະພິສັງຂານ ຕັດຮຽກວ່າ ອຸປະທິ ການລະອຸປະທິ ຄວາມເຂົ້າໄປສະງົບອຸປະທິ ຄວາມສະລັດຖິ້ມອຸປະທິ ຄວາມຣະງັບອຸປະທິ ຊື່ວ່າອະມະຕະນິບພານ ລວມຄວາມວ່າ ຂ້າແຕ່ພຣະໂຄດົມ ທຳທີ່ປາສະຈາກ ອຸປະທິ ພຣະອົງຕັດໄວ້ດີແລ້ວ

ຄຳວ່າ ເປັນແນ່ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າຊົງລະທຸກໄດ້ແລ້ວເປັນແນ່ ເປັນຄຳກ່າວໂດຍໄນຍງວ ເປັນຄຳກ່າວໂດຍບໍ່ສົງໄສ ເປັນຄຳກ່າວໂດຍບໍ່ເຄືອບແຄງ ເປັນຄຳກ່າວໂດຍບໍ່ເປັນ ໘ ໄນ ເປັນຄຳກ່າວໂດຍບໍ່ເປັນ ໘ ຢ່າງ ເປັນຄຳກ່າວໂດຍຮັດກຸມ ເປັນຄຳກ່າວໂດຍບໍ່ຜິດ ຄຳວ່າ ເປັນແນ່ ນີ້ ເປັນຄຳກ່າວທີ່ກຳນົດໄວ້ແນ່ແລ້ວ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ

ຄຳວ່າ ຊົງລະທຸກໄດ້ແລ້ວ ອະທິບາຍວ່າ ຊົງລະ ຄື ຊົງລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຊາດທຸກ ຊະຣາທຸກ ມໍຣະນະທຸກ ໂສກະປະຣິເທວະ ທຸກຂະໂທມະນັດ ອຸປາຍາດທຸກ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຊົງລະທຸກໄດ້ແລ້ວແນ່ນອນ

ຄຳວ່າ ຍ້ອນທຳນີ້ ພຣະອົງຊົງຮູ້ແຈ້ງແລ້ວ ອະທິບາຍວ່າ ຍ້ອນທຳນີ້ ພຣະອົງຊົງຮູ້ ຄືຊົງຮູ້ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວ ລວມຄວາມວ່າ ຍ້ອນທຳນີ້ພຣະອົງຊົງຮູ້ແຈ້ງແລ້ວ ດ້ວຍເຫດນັ້ນ ພາມນັ້ນ ຈຶ່ງຂາບທູນວ່າ

ຂ້າພຣະອົງພໍໃຈພຣະວາຈານີ້ຂອງພຣະອົງ
ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ຂ້າແຕ່ພຣະໂຄດົມ
ທຳທີ່ປາສະຈາກອຸປະທິ ພຣະອົງຕັດໄວ້ດີແລ້ວ
ພຣະຜູ້ມີພຣະພາກເຈົ້າຊົງລະທຸກໄດ້ແລ້ວເປັນແນ່
ຍ້ອນທຳນີ້ ພຣະອົງຊົງຮູ້ແຈ້ງແລ້ວ

[໔໗] (ທ່ານເມດຕະຄູທູນຖາມວ່າ)

ພຣະອົງຜູ້ເປັນພຣະມຸນີຕັດສອນຊົນເຫຼົ່າໃດບໍ່ຢຸດຢ່ອນ
ຊົນແມ່ນເຫຼົ່ານັ້ນເພິ່ງລະທຸກໄດ້ເປັນແນ່
ຍ້ອນແນວນັ້ນ ຂ້າພຣະອົງຈຶ່ງມາພົບພຣະຜູ້ມີພຣະພາກເຈົ້າຜູ້ນາຄະ
ຂໍນະມັດສະການພຣະອົງ (ໂດຍຫວັງວ່າ) ພຣະຜູ້ມີພຣະພາກເຈົ້າ
ເພິ່ງຕັດສອນຂ້າພຣະອົງບໍ່ຢຸດຢ່ອນແດ່ (໑໐)

ຄຳວ່າ ຊົນແມ່ນເຫຼົ່ານັ້ນ ໃນຄຳວ່າ ຊົນແມ່ນເຫຼົ່ານັ້ນເພິ່ງລະທຸກໄດ້ເປັນແນ່ ໄດ້ແກ່ ກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາແລະມະນຸດ

ຄຳວ່າ ເພິ່ງລະທຸກໄດ້ ອະທິບາຍວ່າ ເພິ່ງລະ ຄື ເພິ່ງບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຊາດທຸກ ຊະຣາທຸກ ພະຍາທິທຸກ ມໍຣະນະທຸກ ໂສກະປະຣິເທວະທຸກຂະໂທມະນັດ ອຸປາຍາດທຸກ ລວມຄວາມວ່າ ຊົນແມ່ນເຫຼົ່ານັ້ນເພິ່ງລະທຸກໄດ້ເປັນແນ່

ຄຳວ່າ ຊົນເຫຼົ່າໃດ ໃນຄຳວ່າ ພຣະອົງຜູ້ເປັນພຣະມຸນີ ຕັດສອນຊົນເຫຼົ່າໃດບໍ່ຢຸດຢ່ອນ ໄດ້ແກ່ ກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາແລະມະນຸດ

ຄຳວ່າ ພຣະອົງ ເປັນຄຳທີ່ພາມຮຽກພຣະຜູ້ມີພຣະພາກເຈົ້າ

ຄຳວ່າ ພຣະມຸນີ ອະທິບາຍວ່າ ຍານ ທ່ານຮຽກວ່າ ໂມນະ ຯລຯ ພຣະອົງຊົງກ້າວລ່ວງກິເລດເຄື່ອງຂ້ອງແລະຕັນຫາເໝືອນຕາໜ່າງໄດ້ແລ້ວ ຊື່ວ່າພຣະມຸນີ

ຄຳວ່າ ຕັດສອນບໍ່ຢຸດຢ່ອນ ໄດ້ແກ່ ຕັດສອນບໍ່ຢຸດຢ່ອນ ຄື ຕັດສອນໂດຍເອື້ອເຟື້ອ ຕັດສອນເນືອງ ໆ ຕັດສອນເລື້ອຍ ໆ ຄື ພ່ຳສອນ ລວມຄວາມວ່າ ພຣະອົງຜູ້ເປັນພຣະມຸນີຕັດສອນຊົນເຫຼົ່າໃດບໍ່ຢຸດຢ່ອນ

ຄຳວ່າ ພຣະອົງ ໃນຄຳວ່າ ຍ້ອນແນວນັ້ນຂ້າພຣະອົງຈຶ່ງມາພົບພຣະຜູ້ມີພຣະພາກເຈົ້າຜູ້ນາຄະ ຂໍນະມັດສະການພຣະອົງ ເປັນຄຳທີ່ພາມຮຽກພຣະຜູ້ມີພຣະພາກເຈົ້າ

ຄຳວ່າ ຂໍນະມັດສະການ ອະທິບາຍວ່າ ຂໍນະມັດສະການ ຄື ຂໍສັກກາຣະ ເຄົາລົບ ນັບຖື ບູຊາດ້ວຍກາຍ ວາຈາ ໃຈ ດ້ວຍການປະຕິບັດເອື້ອປະໂຫຍດ ຫຼື ດ້ວຍການປະຕິບັດທຳຖືກຕ້ອງຕາມຫຼັກທຳ

ຄຳວ່າ ຈຶ່ງມາພົບ ໄດ້ແກ່ ຈຶ່ງມາພົບ ຄື ຈຶ່ງມາປະສົບ ມາຫາ ມາເຝົ້າແລ້ວ ຂໍນະມັດສະການພຣະອົງສະເພາະພຣະພັກ

## ວ່າດ້ວຍພຣະຜູ້ມີພຣະພາກເຈົ້າຊື່ວ່ານາຄະ

ຄຳວ່າ ຜູ້ນາຄະ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊື່ວ່າຜູ້ນາຄະ ຍ້ອນບໍ່ຊົງທຳຄວາມຊົ່ວ ພຣະຜູ້ມີພຣະພາກເຈົ້າຊື່ວ່າຜູ້ນາຄະ ຍ້ອນບໍ່ຊົງເຖິງ ພຣະຜູ້ມີພຣະພາກເຈົ້າຊື່ວ່າຜູ້ນາຄະ ຍ້ອນບໍ່ຊົງກັບມາຫາ

ພຣະຜູ້ມີພຣະພາກເຈົ້າຊື່ວ່າຜູ້ນາຄະ ຍ້ອນບໍ່ຊົງທຳຄວາມຊົ່ວ ເປັນແນວໃດ?

ຄື ບາບອະກຸສົນທຳທັງຫຼາຍ ເປັນເຫດແຫ່ງຄວາມເສົ້າໝອງ ກໍ່ພົບໃໝ່ ມີຄວາມກະວົນກະວາຍ ມີທຸກເປັນວິບາກ ເປັນບ່ອນຕັ້ງແຫ່ງຊາດ ຊະຣາ ແລະມໍຣະນະຕໍ່ໄປ ຕັດຮຽກວ່າ ຄວາມຊົ່ວ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ສະພິຍະ)

ບຸກຄົນຜູ້ບໍ່ເຮັດບາບແມ່ນເລັກໜ້ອຍໃນໂລກ
ສະລັດສັງໂຍດເຄື່ອງຜູກພັນໄດ້ທັງໝົດ
ບໍ່ຕິດຂ້ອງຢູ່ໃນທຳເປັນເຄື່ອງຂ້ອງທັງປວງ ເປັນຜູ້ຫຼຸດພົ້ນ
ດຳຣົງຕົນໝັ້ນຄົງເຊັ່ນນັ້ນ ບັນດິດທັງຫຼາຍຮຽກວ່ານາຄະ

ພຣະຜູ້ມີພຣະພາກເຈົ້າຊື່ວ່າຜູ້ນາຄະ ຍ້ອນບໍ່ຊົງທຳຄວາມຊົ່ວ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າຊື່ວ່າຜູ້ນາຄະ ຍ້ອນບໍ່ຊົງເຖິງ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າບໍ່ຊົງເຖິງສັນທາຄະຕິ (ລຳອຽງຍ້ອນມັກ) ບໍ່ຊົງເຖິງໂທສາຄະຕິ (ລຳອຽງຍ້ອນຊັງ) ບໍ່ຊົງເຖິງໂມຫາຄະຕິ (ລຳອຽງຍ້ອນຫຼົງ) ບໍ່ຊົງເຖິງພະຍາຄະຕິ (ລຳອຽງຍ້ອນຢ້ານ) ພຣະອົງບໍ່ຊົງດຳເນີນໄປດ້ວຍອຳນາດຣາຄະ ບໍ່ດຳເນີນໄປດ້ວຍອຳນາດໂທສະ ບໍ່ດຳເນີນໄປດ້ວຍອຳນາດໂມຫະ ບໍ່ດຳເນີນໄປດ້ວຍອຳນາດທິດຖິ ບໍ່ດຳເນີນໄປດ້ວຍອຳນາດມານະ ບໍ່ດຳເນີນໄປດ້ວຍອຳນາດອຸດທັດຈະ ບໍ່ດຳເນີນໄປດ້ວຍອຳນາດວິຈິກິດສາ ບໍ່ດຳເນີນໄປດ້ວຍອຳນາດອະນຸໄສ ໄດ້ແກ່ ບໍ່ຊົງດຳເນີນໄປ ບໍ່ສະເດັດອອກໄປ ບໍ່ຊົງຖືກພາໄປ ບໍ່ຊົງຖືກນຳໄປດ້ວຍທຳທີ່ກໍ່ຄວາມເປັນຝັກເປັນຝ່າຍ

ພຣະຜູ້ມີພຣະພາກເຈົ້າຊື່ວ່າຜູ້ນາຄະຍ້ອນບໍ່ຊົງເຖິງ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າຊື່ວ່າຜູ້ນາຄະ ຍ້ອນບໍ່ຊົງກັບມາຫາ ເປັນແນວໃດ?

ຄື ກິເລດເຫຼົ່າໃດພຣະຜູ້ມີພຣະພາກເຈົ້າຊົງລະໄດ້ແລ້ວ ດ້ວຍໂສດາປັດຕິມັກ

ພຣະຜູ້ມີພຣະພາກເຈົ້າບໍ່ສະເດັດມາ ບໍ່ສະເດັດກັບມາ ບໍ່ຊົງຫວນກັບມາສູ່ກິເລດເຫຼົ່ານັ້ນອີກ ກິເລດເຫຼົ່າໃດ ພຣະຜູ້ມີພຣະພາກເຈົ້າຊົງລະໄດ້ແລ້ວດ້ວຍສະກະທາຄາມີມັກ ຯລຯ ດ້ວຍອະນາກາມີມັກ ຯລຯ ດ້ວຍອະຣະຫັນຕະມັກ ພຣະອົງບໍ່ສະເດັດມາ ບໍ່ສະເດັດກັບມາ ບໍ່ຊົງຫວນ

ກັບມາສູ່ກິເລດເຫຼົ່ານັ້ນອີກ ພຣະຜູ້ມີພຣະພາກເຈົ້າຊື່ວ່າຜູ້ນາຄະ ຍ້ອນບໍ່ກັບມາຫາ ເປັນແນວນີ້ ລວມຄວາມວ່າ ຂ້າພຣະອົງຈຶ່ງມາພົບພຣະຜູ້ມີພຣະພາກເຈົ້າຜູ້ນາຄະ ຂໍນະມັດສະການພຣະອົງ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າເພິ່ງຕັດສອນຂ້າພຣະອົງບໍ່ຢຸດຢ່ອນແດ່ ໄດ້ແກ່ ຂໍພຣະຜູ້ມີພຣະພາກເຈົ້າເພິ່ງຕັດສອນຂ້າພຣະອົງບໍ່ຢຸດຢ່ອນ ຄື ເພິ່ງຕັດສອນໂດຍເອື້ອເຟື້ອ ຕັດສອນເນືອງ ໆ ຕັດສອນເລື້ອຍ ໆ ຄື ພ່ຳສອນແດ່ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າເພິ່ງຕັດສອນຂ້າພຣະອົງບໍ່ຢຸດຢ່ອນແດ່ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ພຣະອົງຜູ້ເປັນພຣະມຸນີຕັດສອນຊົນເຫຼົ່າໃດບໍ່ຢຸດຢ່ອນ
ຊົນແມ່ນເຫຼົ່ານັ້ນເພິ່ງລະທຸກໄດ້ເປັນແນ່
ຍ້ອນແນວນັ້ນ ຂ້າພຣະອົງຈຶ່ງມາພົບພຣະຜູ້ມີພຣະພາກເຈົ້າຜູ້ນາຄະ
ຂໍນະມັດສະການພຣະອົງ (ໂດຍຫວັງວ່າ) ພຣະຜູ້ມີພຣະພາກເຈົ້າ
ເພິ່ງຕັດສອນຂ້າພຣະອົງບໍ່ຢຸດຢ່ອນແດ່

[໔໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ບຸກຄົນທີ່ທ່ານຮູ້ຈັກວ່າເປັນພາມຜູ້ຈົບເວດ
ບໍ່ມີເຄື່ອງກັງວົນ ບໍ່ຂ້ອງໃນກາມະພົບ
ຂ້າມໂອຄະໄດ້ແລ້ວໂດຍແທ້ ແລະເປັນຜູ້ຂ້າມເຖິງຝັ່ງ
ບໍ່ມີກິເລດເໝືອນຕະປູຕຶງຈິດ ໝົດຄວາມສົງໄສແລ້ວ (໑໑)

## ວ່າດ້ວຍບຸກຄົນໄດ້ຊື່ວ່າເປັນພາມ

ຄຳວ່າ ບຸກຄົນທີ່ທ່ານຮູ້ຈັກວ່າເປັນພາມຜູ້ຈົບເວດ ອະທິບາຍວ່າ
ຄຳວ່າ ພາມ ອະທິບາຍວ່າ ຊື່ວ່າພາມ ຍ້ອນລອຍທຳ ໗ ປະການໄດ້ແລ້ວ ຄື

໑. ລອຍສັກກາຍະທິດຖິໄດ້ແລ້ວ
໒. ລອຍວິຈິກິດສາໄດ້ແລ້ວ
໓. ລອຍສີລັບພະຕະປະຣາມາດໄດ້ແລ້ວ
໔. ລອຍຣາຄະໄດ້ແລ້ວ
໕. ລອຍໂທສະໄດ້ແລ້ວ
໖. ລອຍໂມຫະໄດ້ແລ້ວ
໗. ລອຍມານະໄດ້ແລ້ວ

ຄື ພາມລອຍບາບອະກຸສົນທຳເຊິ່ງເປັນເຫດແຫ່ງຄວາມເສົ້າໝອງ ກໍ່ພົບໃໝ່ ມີຄວາມກະວົນກະວາຍ ມີທຸກເປັນວິບາກ ເປັນບ່ອນຕັ້ງແຫ່ງຊາດ ຊະຣາ ມໍຣະນະຕໍ່ໄປໄດ້ແລ້ວ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ສະພິຍະ)

ບຸກຄົນຜູ້ລອຍບາບທັງປວງໄດ້ແລ້ວ ເປັນຜູ້ປາສະຈາກມົນທິນ
ເປັນຜູ້ປະເສີດ ມີຈິດຕັ້ງໝັ້ນດ້ວຍສະມາທິ ດຳຣົງຕົນໝັ້ນຄົງ
ຂ້າມພົ້ນສັງສາຣະວັດ ເປັນຜູ້ບໍລິສຸດບໍລິບູນ
ບໍ່ມີຕັນຫາ ແລະທິດຖິອາໄສ ເປັນຜູ້ໝັ້ນຄົງ
ບັນດິດຮຽກຜູ້ນັ້ນວ່າເປັນພາມ

ຄຳວ່າ ຜູ້ຈົບເວດ ອະທິບາຍວ່າ ຍານໃນມັກ ໔ ຕັດຮຽກວ່າ ເວດ ຯລຯ ພາມນັ້ນກ້າວລ່ວງເວດທັງປວງແລ້ວ ຊື່ວ່າຜູ້ຈົບເວດ

ຄຳວ່າ ທີ່ທ່ານຮູ້ຈັກ ໄດ້ແກ່ທີ່ທ່ານເພິ່ງຮູ້ຈັກ ຄື ຮູ້ທົ່ວ ຮູ້ຊັດແຈ້ງ ຮູ້ສະເພາະ ແທງຕະຫຼອດ ລວມຄວາມວ່າ ບຸກຄົນທີ່ທ່ານຮູ້ຈັກວ່າເປັນພາມຜູ້ຈົບເວດ

ຄຳວ່າ ບໍ່ມີເຄື່ອງກັງວົນ ໃນຄຳວ່າ ບໍ່ມີເຄື່ອງກັງວົນ ບໍ່ຂ້ອງໃນກາມມະພົບ ໄດ້ແກ່ ເຄື່ອງກັງວົນຄືຣາຄະ ເຄື່ອງກັງວົນຄືໂທສະ ເຄື່ອງກັງວົນຄືໂມຫະ ເຄື່ອງກັງວົນຄືມານະ ເຄື່ອງກັງວົນຄືທິດຖິ ເຄື່ອງກັງວົນຄືກິເລດ ເຄື່ອງກັງວົນຄືທຸດຈະຣິດ ເຄື່ອງກັງວົນເຫຼົ່ານີ້ ຜູ້ໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຕັດຮຽກວ່າ ບໍ່ມີເຄື່ອງກັງວົນ

ຄຳວ່າ ກາມ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ຯລຯ ເຫຼົ່ານີ້ຮຽກວ່າ ກິເລດກາມ

ຄຳວ່າ ພົບ ໄດ້ແກ່ ພົບ ໒ ຄື (໑) ກຳພົບ (໒) ພົບໃໝ່ອັນມີໃນປະຕິສົນທິ ຯລຯ ນີ້ຊື່ວ່າກຳພົບ ຯລຯ ນີ້ຊື່ວ່າພົບໃໝ່ອັນມີໃນປະຕິສົນທິ

ຄຳວ່າ ບໍ່ມີເຄື່ອງກັງວົນ ບໍ່ຂ້ອງໃນກາມມະພົບ ອະທິບາຍວ່າ ບຸກຄົນຜູ້ບໍ່ມີເຄື່ອງກັງວົນ ບໍ່ຂ້ອງ ຄື ບໍ່ເກາະຕິດ ບໍ່ກ່ຽວພັນ ບໍ່ພົວພັນ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງໃນກາມມະພົບ ມີໃຈເປັນອິດສະຫຼະ (ຈາກເຄື່ອງກັງວົນ) ຢູ່ ລວມຄວາມວ່າ ບໍ່ມີເຄື່ອງກັງວົນ ບໍ່ຂ້ອງໃນກາມະພົບ

ຄຳວ່າ ໂດຍແທ້ ໃນຄຳວ່າ ຂ້າມໂອຄະໄດ້ແລ້ວໂດຍແທ້ ເປັນຄຳກ່າວໂດຍໄນຍງວ ຯລຯ ຄຳວ່າ ໂດຍແທ້ ນີ້ ເປັນຄຳກ່າວທີ່ກຳນົດໄວ້ແນ່ແລ້ວ

ຄຳວ່າ ໂອຄະ ໄດ້ແກ່ ກາໂມຄະ ພະໂວຄະ ທິດໂຖຄະ ອະວິດໂຊຄະ

ຄຳວ່າ ຂ້າມ ໄດ້ແກ່ ຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍ ລວມຄວາມວ່າ ຂ້າມໂອຄະໄດ້ແລ້ວໂດຍແທ້

ຄໍາວ່າ ຂ້າມ ໃນຄໍາວ່າ ເປັນຜູ້ຂ້າມເຖິງຝັ່ງ ບໍ່ມີກິເລດເໝືອນຕະປູຕຶງຈິດ ໝົດຄວາມສົງໄສແລ້ວ ອະທິບາຍວ່າ ບຸກຄົນຂ້າມ ຂ້າມຂຶ້ນ ຂ້າມພົ້ນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນກາໂມຄະ ພະໂວຄະ ທິດໂຖຄະ ອະວິດໂຊຄະ ແລະທາງແຫ່ງສົງສານໄດ້ແລ້ວ ຄື ບຸກຄົນນັ້ນຢູ່ໃນ (ອະຣິຍະວາສະທໍາ) ແລ້ວ ປະພຶດຈະຣະນະທໍາແລ້ວ ຜ່ານທາງໄກໄດ້ແລ້ວ ເຖິງທິດ (ນິບພານ) ແລ້ວ ເຖິງຈຸດຈົບ (ນິບພານ) ແລ້ວ ຮັກສາພົມມະຈັນໄດ້ແລ້ວ ເຖິງທິດຖິອັນສູງສຸດແລ້ວ ຈະເລີນມັກໄດ້ແລ້ວ ລະກິເລດໄດ້ແລ້ວ ຮູ້ແຈ້ງທໍາທີ່ບໍ່ກໍາເຣີບແລ້ວ ເຮັດນິໂຣດໃຫ້ແຈ້ງໄດ້ແລ້ວ ທ່ານກໍານົດຮູ້ທຸກໄດ້ແລ້ວ ລະສະມຸໄທໄດ້ແລ້ວ ຈະເລີນມັກໄດ້ແລ້ວ ເຮັດນິໂຣດໃຫ້ແຈ້ງແລ້ວຮູ້ຍິ່ງທໍາທີ່ຄວນຮູ້ຍິ່ງແລ້ວ ກໍານົດຮູ້ທໍາທີ່ຄວນກໍານົດຮູ້ໄດ້ແລ້ວ ລະທໍາທີ່ຄວນລະໄດ້ແລ້ວ ຈະເລີນທໍາທີ່ຄວນຈະເລີນໄດ້ແລ້ວ ເຮັດໃຫ້ແຈ້ງທໍາທີ່ຄວນເຮັດໃຫ້ແຈ້ງ ໄດ້ແລ້ວ ບຸກຄົນນັ້ນຖອນຫຼັກສະລັກຄືອະວິດຊາໄດ້ແລ້ວ ຖົມຄູຄືກໍາໄດ້ແລ້ວ ຖອນເສົາຣະນຽດຄືຕັນຫາໄດ້ແລ້ວ ບໍ່ມີບານປະຕູຄືສັງໂຍດ ເປັນຜູ້ໄກຈາກຂ້າເສິກຄືກິເລດ ປົດທຸງຄືມານະລົງສາແລ້ວ ປົງພາຣະໄດ້ແລ້ວບໍ່ກ່ຽວຂ້ອງກັບໂຍຄະກິເລດແລ້ວ ລະອົງ ໕ (ແຫ່ງນິວອນ) ໄດ້ແລ້ວ ປະກອບດ້ວຍອົງ ໖ ມີທໍາເຄື່ອງຮັກສາຢ່າງເອກ (ຄືສະຕິ) ມີອະປັດເສນະທໍາ ໔ ຢ່າງ ມີປັດເຈກສັດຈະອັນບັນເທົາໄດ້ແລ້ວມີການສະແຫວງຫາອັນສະລະໄດ້ໂດຍມັກ ບໍ່ບົກພ່ອງ ມີຄວາມດໍາຣິບໍ່ຂຸ່ນມົວ ມີກາຍສັງຂານອັນຣະງັບໄດ້ແລ້ວ ມີຈິດຫຼຸດພົ້ນດີແລ້ວ ມີປັນຍາຫຼຸດພົ້ນໄດ້ດີ ເປັນຜູ້ບໍລິສຸດບໍລິບູນ ຢູ່ຈົບພົມມະຈັນເປັນອຸດົມບຸຣຸດ ເປັນບໍຣົມບຸຣຸດ ເຖິງການບັນລຸປະຣະມັດຖະທໍາແລ້ວ

ບຸກຄົນນັ້ນ ບໍ່ຕ້ອງກໍ່ຜົນກໍາ ບໍ່ຕ້ອງກໍາຈັດ ກໍາຈັດໄດ້ແລ້ວດໍາຣົງຕົນຢູ່ ບໍ່ຕ້ອງລະກິເລດບໍ່ຕ້ອງຖືໝັ້ນ ລະໄດ້ແລ້ວດໍາຣົງຕົນຢູ່ ບໍ່ຕ້ອງຫຍິບ (ດ້ວຍຕັນຫາ) ບໍ່ຕ້ອງຍົກ (ຕົນດ້ວຍມານະ) ຫຍິບຮຽບຮ້ອຍແລ້ວດໍາຣົງຕົນຢູ່ ບໍ່ຕ້ອງດັບ (ໄຟຄືກິເລດ) ບໍ່ຕ້ອງກໍ່ ດັບໄດ້ແລ້ວດໍາຣົງຕົນຢູ່ ຊື່ວ່າດໍາຣົງຕົນຢູ່ໄດ້ຍ້ອນປະກອບດ້ວຍສີນຂັນອັນເປັນອະເສຂະໆລໆ ດ້ວຍສະມາທິຂັນ ໆລໆ ດ້ວຍປັນຍາຂັນ ໆລໆ ດ້ວຍວິມຸດຕິຂັນ ໆລໆ ດໍາຣົງຕົນຢູ່ດ້ວຍວິມຸດຕິຍານະທັດສະນະຂັນອັນເປັນອະເສຂະ ແທງຕະຫຼອດສັດຈະແລ້ວ ດໍາຣົງຕົນຢູ່ໂດຍການກ້າວລ່ວງຕັນຫາອັນເປັນເຫດໃຫ້ຫວັ່ນໄຫວ ດໍາຣົງຕົນຢູ່ໂດຍການດັບໄຟຄືກິເລດ ດໍາຣົງຕົນຢູ່ໂດຍບໍ່ຕ້ອງວຽນວ່າຍຕາຍເກີດ ດໍາຣົງຕົນຢູ່ໂດຍການສະມາທານທໍາຂັ້ນສຸດຍອດ ດໍາຣົງຕົນຢູ່ໂດຍການເສບວິມຸດຕິ ດໍາຣົງຕົນຢູ່ດ້ວຍເມດຕາອັນບໍລິສຸດ ໆລໆ ດ້ວຍກະລຸນາໆລໆ ດ້ວຍມຸທິຕາອັນບໍລິສຸດ ໆລໆ ດໍາຣົງຕົນຢູ່ດ້ວຍອຸເປກຂາອັນບໍລິສຸດ ດໍາຣົງຕົນຢູ່ດ້ວຍຄວາມບໍລິສຸດຢ່າງຍິ່ງ ດໍາຣົງຕົນຢູ່ດ້ວຍຄວາມບໍລິສຸດຍ້ອນບໍ່ມີຕັນຫາທິດຖິແລະມານະ ດໍາຣົງຕົນຢູ່ໂດຍຄວາມເປັນຜູ້ຫຼຸດພົ້ນ ດໍາຣົງຕົນຢູ່ໂດຍຄວາມເປັນຜູ້ສັນໂດດ ດໍາຣົງຕົນຢູ່ໃນຂັນສຸດທ້າຍ ດໍາຣົງຕົນຢູ່ໃນທາດສຸດທ້າຍ ດໍາຣົງຕົນຢູ່ໃນອາຍະຕະນະສຸດທ້າຍ ດໍາຣົງຕົນຢູ່ໃນຄະຕິສຸດທ້າຍ ດໍາຣົງຕົນຢູ່ໃນການຖືກໍາເນີດສຸດທ້າຍ ດໍາຣົງຕົນຢູ່ໃນປະຕິສົນທິສຸດທ້າຍ ດໍາຣົງຕົນຢູ່ໃນພົບສຸດທ້າຍ ດໍາຣົງຕົນຢູ່ໃນສົງສານສຸດທ້າຍ ດໍາຣົງຕົນຢູ່

ໃນວັດຕະສຸດທ້າຍ ດຳຣົງຕົນຢູ່ໃນພົບສຸດທ້າຍ ດຳຣົງຕົນຢູ່ໃນປະຊຸມແຫ່ງຂັນ ຂັ້ນສຸດທ້າຍ ຊົງໄວ້ເຊິ່ງຮ່າງກາຍຂັ້ນສຸດທ້າຍ ເປັນຜູ້ໄກຈາກຂ້າເສິກ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ)

ພຣະຂີນາສົບນັ້ນ ມີພົບນີ້ເປັນພົບສຸດທ້າຍ
ມີປະຊຸມແຫ່ງຂັນນີ້ເປັນຄັ້ງສຸດທ້າຍ
ບໍ່ມີການວຽນເກີດ ວຽນແກ່ ວຽນຕາຍ ແລະພົບໃໝ່ກໍບໍ່ມີອີກ

ຄຳວ່າ ແລະເປັນຜູ້ຂ້າມເຖິງຝັ່ງ ອະທິບາຍວ່າ ອະມະຕະນິບພານຕັດຮຽກວ່າ ຝັ່ງ ຄື ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ

ບຸກຄົນນັ້ນເຖິງຝັ່ງ ບັນລຸຝັ່ງ ເຖິງສ່ວນສຸດ ບັນລຸສ່ວນສຸດ ເຖິງປາຍສຸດ ບັນລຸປາຍສຸດ ເຖິງທ້າຍສຸດ ບັນລຸທ້າຍສຸດ ເຖິງຄວາມສຳເລັດ ບັນລຸຄວາມສຳເລັດ ເຖິງບ່ອນປົກປ້ອງ ບັນລຸບ່ອນປົກປ້ອງ ເຖິງບ່ອນຫຼົບຫຼີກ ບັນລຸບ່ອນຫຼົບຫຼີກ ເຖິງບ່ອນເພິ່ງ ບັນລຸບ່ອນເພິ່ງ ເຖິງບ່ອນບໍ່ມີໄພ ບັນລຸບ່ອນບໍ່ມີໄພ ເຖິງບ່ອນບໍ່ຈຸຕິ ບັນລຸບ່ອນບໍ່ຈຸຕິ ເຖິງບ່ອນບໍ່ຕາຍ ບັນລຸບ່ອນບໍ່ຕາຍ ເຖິງບ່ອນດັບ ບັນລຸບ່ອນດັບ ບຸກຄົນນັ້ນຢູ່ໃນ (ອະຣິຍະວາສະທຳ) ແລ້ວ ປະພຶດຈະຣະນະທຳແລ້ວ ຯລຯ ບໍ່ມີການວຽນເກີດ ວຽນແກ່ ວຽນຕາຍ ແລະພົບໃໝ່ກໍບໍ່ມີອີກ ລວມຄວາມວ່າ ແລະເປັນຜູ້ຂ້າມເຖິງຝັ່ງ

ຄຳວ່າ ບໍ່ມີກິເລດເໝືອນຕະປູຕຶງຈິດ ອະທິບາຍວ່າ ຣາຄະ ໂທສະ ໂມຫະ ໂກທະ ອຸປະນາຫະ ຯລຯ ອະກຸສະລາພິສັງຂານທຸກປະເພດ ຊື່ວ່າກິເລດເໝືອນຕະປູຕຶງຈິດ ກິເລດເໝືອນຕະປູ ຕຶງຈິດເຫຼົ່ານີ້ ຜູ້ໃດລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຕັດຮຽກວ່າ ຜູ້ບໍ່ມີກິເລດເໝືອນຕະປູຕຶງຈິດ

ຄຳວ່າ ໝົດຄວາມສົງໄສ ອະທິບາຍວ່າ ຄວາມສົງໄສໃນທຸກ ຄວາມສົງໄສໃນທຸກຂະສະມຸໄທ ຄວາມສົງໄສໃນທຸກຂະນິໂຣທະ ຄວາມສົງໄສໃນທຸກຂະນິໂຣທະຄາມິນີປະຕິປະທາ ຄວາມສົງໄສໃນສ່ວນເບື້ອງຕົ້ນ ຄວາມສົງໄສໃນສ່ວນເບື້ອງປາຍ ຄວາມສົງໄສທັງໃນສ່ວນເບື້ອງຕົ້ນແລະສ່ວນເບື້ອງປາຍ ຄວາມສົງໄສໃນປະຕິດຈະສະມຸບບາດວ່າ ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຄວາມສົງໄສ ກິຣິຍາທີ່ສົງໄສ ພາວະທີ່ສົງໄສ ຄວາມເຄືອບແຄງ ຄວາມລັງເລ ຄວາມເຫັນເປັນ ໔ ຝ່າຍ ໔ ທາງ ຄວາມບໍ່ແນ່ໃຈ ຄວາມຍຶດຖືຫຼາຍຢ່າງ ຄວາມບໍ່ຕົກລົງໃຈ ຄວາມຕັດສິນໃຈບໍ່ໄດ້ ຄວາມກຳນົດຖືບໍ່ໄດ້ ຄວາມຫວາດຫວັ່ນແຫ່ງຈິດ ຄວາມຕິດຂັດໃນໃຈເຫັນປານນີ້

ຄວາມສົງໄສເຫຼົ່ານີ້ ຜູ້ໃດລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຕັດຮຽກວ່າ ຜູ້ໝົດຄວາມສົງໄສ ລວມຄວາມວ່າ ແລະເປັນຜູ້ຂ້າມເຖິງຝັ່ງ ບໍ່ມີກິເລດເໝືອນຕະປູຕຶງຈິດ ໝົດຄວາມສົງໄສແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ບຸກຄົນທີ່ທ່ານຮູ້ຈັກວ່າເປັນພາມຜູ້ຈົບເວດ
ບໍ່ມີເຄື່ອງກັງວົນ ບໍ່ຂ້ອງໃນກາມະພົບ
ຂ້າມໂອຄະໄດ້ແລ້ວໂດຍແທ້ ແລະເປັນຜູ້ຂ້າມເຖິງຝັ່ງ
ບໍ່ມີກິເລດເໝືອນຕະປູຕຶງຈິດ ໝົດຄວາມສົງໄສແລ້ວ

[໘໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ນໍຣະຊົນໃດໃນບ່ອນນີ້ ເປັນຜູ້ມີປັນຍາ ຈົບເວດ
ສະລັດເຄື່ອງຂ້ອງໃນພົບນ້ອຍພົບໃຫຍ່ນີ້ໄດ້ແລ້ວ
ນໍຣະຊົນນັ້ນເປັນຜູ້ຄາຍຕັນຫາແລ້ວ ບໍ່ມີທຸກ ບໍ່ມີຄວາມຫວັງ
ເຮົາກ່າວວ່າ ນໍຣະຊົນນັ້ນຂ້າມຊາດແລະຊະຣາໄດ້ແລ້ວ (໑໘)

ຄຳວ່າ ຜູ້ມີປັນຍາ ໃນຄຳວ່າ ນໍຣະຊົນໃດໃນບ່ອນນີ້ ເປັນຜູ້ມີປັນຍາ ຈົບເວດ ໄດ້ແກ່ ຜູ້ມີວິດຊາ ມີຍານ ມີປັນຍາຊັດແຈ້ງ ມີປັນຍາເຄື່ອງທຳລາຍກິເລດ

ຄຳວ່າ ໃດ ໄດ້ແກ່ ຜູ້ໃດ ຄື ຜູ້ເຊັ່ນໃດ ຯລຯ ຫຼື ມະນຸດກໍຕາມ

ຄຳວ່າ ຈົບເວດ ອະທິບາຍວ່າ ຍານໃນມັກ ໔ ຕັດຮຽກວ່າ ເວດ ຯລຯ ເຂົາກ້າວລ່ວງເວດທັງປວງແລ້ວ ຊື່ວ່າຈົບເວດ

ຄຳວ່າ ນໍຣະຊົນ ໄດ້ແກ່ ຜູ້ຂ້ອງຢູ່ ນໍຣະຊົນ ມານົບ ບຸຣຸດ ບຸກຄົນ ຜູ້ມີຊີວິດ ຜູ້ເກີດ ສັດເກີດ ຜູ້ເປັນໄປຕາມກຳ ມະນຸດ

ຄຳວ່າ ໃນບ່ອນນີ້ ໄດ້ແກ່ ໃນຄວາມເຫັນນີ້ ຯລຯ ໃນມະນຸດໂລກນີ້ ລວມຄວາມວ່າ ນໍຣະຊົນໃດໃນບ່ອນນີ້ ເປັນຜູ້ມີປັນຍາຈົບເວດ

ຄຳວ່າ ໃນພົບນ້ອຍພົບໃຫຍ່ ໃນຄຳວ່າ ສະລັດເຄື່ອງຂ້ອງໃນພົບນ້ອຍພົບໃຫຍ່ນີ້ໄດ້ແລ້ວ ອະທິບາຍວ່າ ພົບນ້ອຍພົບໃຫຍ່ ຄື ໃນກຳມະວັດແລະວິປາກະວັດ ໃນກຳມະວັດເປັນເຄື່ອງເກີດໃນກາມະພົບ ໃນວິປາກະວັດເປັນເຄື່ອງເກີດໃນກາມະພົບ ໃນກຳມະວັດເປັນເຄື່ອງເກີດໃນຣູບພົບ ໃນວິປາກະວັດເປັນເຄື່ອງເກີດໃນຣູບພົບ ໃນກຳມະວັດເປັນເຄື່ອງເກີດໃນອະຣູບ ໃນວິປາກະວັດເປັນເຄື່ອງເກີດໃນອະຣູບ ໃນພົບຕໍ່ໄປ ໃນຄະຕິຕໍ່ໄປ ໃນການຖືກຳເນີດ ຕໍ່ໄປ ໃນປະຕິສົນທິຕໍ່ໄປ ໃນການບັງເກີດຂອງອັດຕະພາບຕໍ່ໄປ

## ວ່າດ້ວຍເຄື່ອງຂ້ອງ ໗

ຄໍາວ່າ ເຄື່ອງຂ້ອງ ໄດ້ແກ່ ເຄື່ອງຂ້ອງ ໗ ຢ່າງ ຄື

໑. ເຄື່ອງຂ້ອງຄືຣາຄະ
໒. ເຄື່ອງຂ້ອງຄືໂທສະ
໓. ເຄື່ອງຂ້ອງຄືໂມຫະ
໔. ເຄື່ອງຂ້ອງຄືມານະ
໕. ເຄື່ອງຂ້ອງຄືທິດຖິ
໖. ເຄື່ອງຂ້ອງຄືກິເລດ
໗. ເຄື່ອງຂ້ອງຄືທຸດຈະຣິດ

ຄໍາວ່າ ສະລັດ ໄດ້ແກ່ ປົດ ຫຼື ສະລັດເຄື່ອງຂ້ອງທັງຫຼາຍໄດ້ແລ້ວ

ອີກໄນໜຶ່ງ ປົດເປື້ອງ ຫຼື ສະລັດເຄື່ອງຂ້ອງ ຄື ເຄື່ອງຜູກ ເຄື່ອງມັດ ເຄື່ອງຜູກພັນ ເຄື່ອງເກາະຕິດ ເຄື່ອງກ່ຽວພັນ ເຄື່ອງພົວພັນ ເຄື່ອງຜູກມັດທັງຫຼາຍໄດ້ແລ້ວ ເໝືອນຄົນທໍາການ ປົດປ່ອຍຍານ ຄານຫາມ ລົດ ກວຽນ ຫຼື ລໍ້ເລື່ອນໃຫ້ຫັນເຫໄປ ສັນນັ້ນ

ອີກໄນໜຶ່ງ ປົດເປື້ອງຫຼືສະລັດເຄື່ອງຂ້ອງ ຄື ເຄື່ອງຜູກ ເຄື່ອງຜູກພັນ ເຄື່ອງເກາະຕິດ ເຄື່ອງກ່ຽວພັນ ເຄື່ອງພົວພັນ ເຄື່ອງຜູກມັດທັງຫຼາຍໄດ້ແລ້ວ ລວມຄວາມວ່າ ສະລັດເຄື່ອງຂ້ອງ ໃນພົບນ້ອຍພົບໃຫຍ່ນີ້ໄດ້ແລ້ວ

ຄໍາວ່າ ນໍຣະຊົນນັ້ນ ເປັນຜູ້ຄາຍຕັນຫາແລ້ວ ບໍ່ມີທຸກ ບໍ່ມີຄວາມຫວັງ ເຮົາກ່າວວ່າ ນໍຣະ ຊົນນັ້ນ ຂ້າມຊາດແລະຊະຣາໄດ້ແລ້ວ ອະທິບາຍວ່າ

ຄໍາວ່າ ຕັນຫາ ໄດ້ແກ່ ຣູdwບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ແລະທໍາມະຕັນຫາ

ຕັນຫານີ້ຜູ້ໃດລະໄດ້ແລ້ວ ຄື ຕັດຂາດໄດ້ແແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຕັດຮຽກວ່າ ຜູ້ຄາຍຕັນຫາແລ້ວ ຄື ປາສະຈາກຕັນຫາແລ້ວ ເປັນຜູ້ສະລະຕັນຫາແລ້ວ ຄາຍຕັນຫາແລ້ວ ປ່ອຍຕັນຫາແລ້ວ ລະຕັນຫາ ແລ້ວ ສະລັດຖິ້ມຕັນຫາແລ້ວ ໄດ້ແກ່ ຜູ້ຄາຍຣາຄະແລ້ວ ສະລະຣາຄະແລ້ວ ຄາຍຣາຄະແລ້ວ ປ່ອຍຣາຄະແລ້ວ ລະຣາຄະແລ້ວ ສະລັດຖິ້ມຣາຄະແລ້ວ ເປັນຜູ້ໝົດຄວາມຢາກແລ້ວ ດັບແລ້ວ ເຢັນແລ້ວ ມີຕົນອັນປະເສີດສະເຫວີຍສຸກຢູ່ ລວມຄວາມວ່າ ນໍຣະຊົນນັ້ນເປັນຜູ້ຄາຍຕັນຫາແລ້ວ

ຄໍາວ່າ ບໍ່ມີທຸກ ໄດ້ແກ່ ທຸກຄືຣາຄະ ທຸກຄືໂທສະ ທຸກຄືໂມຫະ ທຸກຄືໂກທະ ທຸກຄືອຸປະ ນາຫະ ຯລຯ ທຸກຄືອະກຸສະລາພິສັງຂານທຸກປະເພດ ຜູ້ໃດລະທຸກເຫຼົ່ານີ້ໄດ້ແລ້ວ ຄື ຕັດຂາດ

ໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຕັດຣຽກວ່າ ບໍ່ມີທຸກ

ຄຳວ່າ ບໍ່ມີຄວາມຫວັງ ອະທິບາຍວ່າ ຕັນຫາຕັດຣຽກວ່າ ຄວາມຫວັງ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ฯລฯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຄວາມຫວັງ ຄື ຕັນຫາເຫຼົ່ານີ້ ຜູ້ໃດລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຕັດຣຽກວ່າ ບໍ່ມີຄວາມຫວັງ

ຄຳວ່າ ຊາດ ໄດ້ແກ່ ການເກີດ ຄື ເກີດຂຶ້ນ ການກ້າວລົງ (ສູ່ທ້ອງ) ການບັງເກີດ ການບັງເກີດຂຶ້ນ ຄວາມຜາກົດແຫ່ງຂັນທັງຫຼາຍ ການໄດ້ອາຍະຕະນະໃນໝູ່ສັດນັ້ນ ໆ ຂອງສັດເຫຼົ່ານັ້ນ ໆ

ຄຳວ່າ ຊະຣາ ໄດ້ແກ່ ຄວາມແກ່ ຄື ຄວາມຊຸດໂຊມ ຄວາມເປັນຜູ້ມີແຂ້ວຫຼ່ອນ ຄວາມເປັນຜູ້ມີຜົມຫງອກ ຄວາມເປັນຜູ້ມີໜັງຫ່ຽວ ຄວາມເສື່ອມອາຍຸ ຄວາມແກ່ຫງ່ອມແຫ່ງອິນຊີທັງຫຼາຍໃນໝູ່ສັດນັ້ນ ໆ ຂອງສັດເຫຼົ່ານັ້ນ ໆ

ຄຳວ່າ ນໍຣະຊົນນັ້ນເປັນຜູ້ຄາຍຕັນຫາແລ້ວ ບໍ່ມີທຸກ ບໍ່ມີຄວາມຫວັງ ເຮົາກ່າວວ່າ ນໍຣະຊົນນັ້ນຂ້າມຊາດ ແລະຊະຣາໄດ້ແລ້ວ ອະທິບາຍວ່າ ເຮົາກ່າວ ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດວ່າ ຜູ້ທີ່ປາສະຈາກຕັນຫາ ບໍ່ມີທຸກ ບໍ່ມີຄວາມຫວັງ ຂ້າມ ຄື ຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍຊາດ ຊະຣາແລະມໍຣະນະໄດ້ແລ້ວ ລວມຄວາມວ່າ ນໍຣະຊົນນັ້ນເປັນຜູ້ຄາຍຕັນຫາແລ້ວ ບໍ່ມີທຸກ ບໍ່ມີຄວາມຫວັງ ເຮົາກ່າວວ່າ ນໍຣະຊົນນັ້ນຂ້າມຊາດ ແລະຊະຣາໄດ້ແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດ ຕອບວ່າ

ນໍຣະຊົນໃດໃນບ່ອນນີ້ ເປັນຜູ້ມີປັນຍາ ຈົບເວດ<br>
ສະລັດເຄື່ອງຂ້ອງໃນພົບນ້ອຍພົບໃຫຍ່ນີ້ໄດ້ແລ້ວ<br>
ນໍຣະຊົນນັ້ນເປັນຜູ້ຄາຍຕັນຫາແລ້ວ ບໍ່ມີທຸກ ບໍ່ມີຄວາມຫວັງ<br>
ເຮົາກ່າວວ່າ ນໍຣະຊົນນັ້ນຂ້າມຊາດແລະຊະຣາໄດ້ແລ້ວ

ພ້ອມກັບການຈົບຄາຖາ ฯລฯ ເມດຕະຄູມານົບฯລฯ ໂດຍປະກາດວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ

**ເມດຕະຄູມານະວະປັນຫານິດເທດທີ ໔ ຈົບ**

# ໕. ໂທຕະກະມານະວະປັນຫານິດເທດ

## ວ່າດ້ວຍປັນຫາຂອງໂທຕະກະມານົບ

[໓໐] (ທ່ານໂທຕະກະທູນຖາມ ດັ່ງນີ້)

ຂ້າແຕ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມພຣະອົງ
ຂໍພຣະອົງໂຜດຕັດບອກປັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ
ຂ້າແຕ່ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຂ້າພຣະອົງມຸ້ງຫວັງຈະຮັບຟັງພຣະວາຈາຂອງພຣະອົງຢ່າງຍິ່ງ
ບຸກຄົນໄດ້ຟັງພຣະສຸຣະສຽງຂອງພຣະອົງແລ້ວ
ເພິ່ງສຶກສາທຳເປັນເຫດດັບກິເລດເພື່ອຕົນ (໑)

## ວ່າດ້ວຍການຖາມ ໓

ຄຳວ່າ ຂໍທູນຖາມ ໃນຄຳວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມພຣະອົງ ຂໍພຣະອົງໂຜດຕັດບອກປັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ ໄດ້ແກ່ ການຖາມ ໓ ຢ່າງ ຄື

໑. ການຖາມເພື່ອເຮັດໃຫ້ຊັດເຈນໃນສິ່ງທີ່ຍັງບໍ່ເຄີຍເຫັນ
໒. ການຖາມເພື່ອທຽບຄຽງໃນສິ່ງທີ່ເຄີຍເຫັນແລ້ວ
໓. ການຖາມເພື່ອຕັດຄວາມສົງໄສ ຯລຯ

ການຖາມອີກ ໓ ຢ່າງ ຯລຯ

໓ ການຖາມເຖິງນິບພານ

ຄຳວ່າ ຂ້າພຣະອົງຂໍທູນຖາມພຣະອົງ ອະທິບາຍວ່າ ຂ້າພຣະອົງຂໍທູນຖາມພຣະອົງ ຄື ທູນຂໍພຣະອົງ ທູນອັນເຊີນໃຫ້ຕັດ ທູນໃຫ້ຊົງປະກາດວ່າ ຂໍພຣະອົງໂຜດຕັດບອກປັນຫານັ້ນແກ່ຂ້າພຣະອົງ ລວມຄວາມວ່າ ຂ້າພຣະອົງຂໍທູນຖາມພຣະອົງ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ

ຄຳວ່າ ຂໍພຣະອົງໂຜດຕັດບອກປັນຫານັ້ນແກ່ຂ້າພຣະອົງ ອະທິບາຍວ່າ ຂໍພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດ ລວມຄວາມວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມພຣະອົງ ຂໍພຣະອົງໂຜດຕັດບອກປັນຫານັ້ນແກ່ຂ້າ ພຣະອົງ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານໂທຕະກະທູນຖາມ ດັ່ງນີ້ ເປັນບົດສົນທິ ຯລຯ

ຄຳວ່າ ທ່ານ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາລົບ ຄຳວ່າ ທ່ານນີ້ ເປັນຄຳກ່າວທີ່ມີຄວາມເຄົາລົບ ແລະຄວາມຢຳເກງ

ຄຳວ່າ ໂທຕະກະ ເປັນຊື່ຂອງພາມນັ້ນ ໆລໆ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານໂທຕະກະທູນຖາມ ດັ່ງນີ້

ຄຳວ່າ ຂ້າແຕ່ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ຂ້າພຣະອົງມຸ້ງຫວັງຈະຮັບຟັງພຣະວາຈາຂອງພຣະອົງຢ່າງຍິ່ງ ອະທິບາຍວ່າ ຂ້າພຣະອົງມຸ້ງຫວັງ ມຸ້ງຫວັງຢ່າງຍິ່ງ ຄື ຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງພຣະວາຈາ ຄື ຄຳທີ່ເປັນແນວທາງ ເທດສະໜາ ຄຳສັ່ງສອນ ຄຳພ່ຳສອນຂອງພຣະອົງ

ຄຳວ່າ ຂ້າແຕ່ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ຍ້ອນມີຄວາມໝາຍວ່າແນວໃດ

ຄື ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາສີນຂັນໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ໆລໆ ພຣະຜູ້ຊົງອົງອາດກວ່ານໍຣະຊົນປະທັບຢູ່ບ່ອນໃດ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ລວມຄວາມວ່າ ຂ້າແຕ່ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ຂ້າພຣະອົງມຸ້ງຫວັງຈະຮັບຟັງພຣະວາຈາຂອງພຣະອົງ

ຄຳວ່າ ບຸກຄົນຟັງພຣະສຸຣະສຽງຂອງພຣະອົງແລ້ວ ອະທິບາຍວ່າ ຟັງ ໄດ້ແກ່ ສະດັບຮຽນ ຊົງຈຳ ເຂົ້າໄປກຳນົດເຊິ່ງພຣະດຳຣັດ ຄື ຄຳທີ່ເປັນແນວທາງ ເທດສະໜາ ຄຳສັ່ງສອນ ຄຳພ່ຳສອນຂອງພຣະອົງແລ້ວ ລວມຄວາມວ່າ ບຸກຄົນຟັງພຣະສຸຣະສຽງຂອງພຣະອົງແລ້ວ

## ວ່າດ້ວຍສິກຂາ ໓

ຄຳວ່າ ເພິ່ງສຶກສາ ໃນຄຳວ່າ ເພິ່ງສຶກສາທຳເປັນເຫດດັບກິເລດເພື່ອຕົນ ອະທິບາຍວ່າ ສິກຂາ ໓ ຄື

໑. ອະທິສີນສິກຂາ

໒. ອະທິຈິດຕະສິກຂາ

໓. ອະທິປັນຍາສິກຂາ ໆລໆ

ນີ້ຊື່ວ່າອະທິປັນຍາສິກຂາ

ຄຳວ່າ ທຳເປັນເຫດດັບກິເລດເພື່ອຕົນ ອະທິບາຍວ່າ ເພິ່ງສຶກສາທັງອະທິສີນສິກຂາ ທັງອະທິຈິດຕະສິກຂາ ທັງອະທິປັນຍາສິກຂາ ເພື່ອໃຫ້ຣາຄະ ໂທສະ ໂມຫະ ໂກທະ ອຸປະນາຫະຂອງຕົນດັບໄປ ໆລໆ ເພື່ອຄວາມສະງົບ ເຂົ້າໄປສະງົບ ສະງົບເຢັນ ເພື່ອໃຫ້ດັບ ເພື່ອສະລັດຖິ້ມ ເພື່ອຄວາມຣະງັບອະກຸສະລາພິສັງຂານທຸກປະເພດ

ສິກຂາ ໓ ເຫຼົ່ານີ້ ເມື່ອບຸກຄົນນຶກເຖິງ ຊື່ວ່າເພິ່ງສຶກສາ ເມື່ອຮູ້ ຊື່ວ່າເພິ່ງສຶກສາ ເມື່ອເຫັນ ຊື່ວ່າເພິ່ງສຶກສາ ເມື່ອພິຈາລະນາ ຊື່ວ່າເພິ່ງສຶກສາ ເມື່ອອະທິຖານຈິດ ຊື່ວ່າເພິ່ງສຶກສາ ເມື່ອນ້ອມໃຈເຊື່ອດ້ວຍສັດທາ ຊື່ວ່າເພິ່ງສຶກສາ ເມື່ອປະຄອງຄວາມພຽນ ຊື່ວ່າເພິ່ງສຶກສາ ເມື່ອຕັ້ງສະຕິ ຊື່ວ່າເພິ່ງສຶກສາ ເມື່ອຕັ້ງໃຈ ຊື່ວ່າເພິ່ງສຶກສາ ເມື່ອຮູ້ແຈ້ງດ້ວຍປັນຍາ ຊື່ວ່າເພິ່ງສຶກສາ ເມື່ອຮູ້ແຈ້ງທຳທີ່ຄວນຮູ້ແຈ້ງ ຊື່ວ່າເພິ່ງສຶກສາ ເມື່ອກຳນົດຮູ້ທຳທີ່ຄວນກຳນົດຮູ້ ຊື່ວ່າເພິ່ງສຶກສາ ເມື່ອລະທຳທີ່ຄວນລະ ຊື່ວ່າເພິ່ງສຶກສາ ເມື່ອຈະເລີນທຳທີ່ຄວນຈະເລີນ ຊື່ວ່າເພິ່ງສຶກສາ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າເພິ່ງສຶກສາ ຄື ເພິ່ງປະພຶດ ປະພຶດເອື້ອເຟື້ອ ປະພຶດເອື້ອເຟື້ອໂດຍຊອບ ສະມາທານປະພຶດ ລວມຄວາມວ່າ ເພິ່ງສຶກສາທຳເປັນເຫດດັບກິເລດເພື່ອຕົນ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

(ທ່ານໂທຕະກະທູນຖາມ ດັ່ງນີ້)

ຂ້າແຕ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມພຣະອົງ
ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ
ຂ້າແຕ່ ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຂ້າພຣະອົງມຸ້ງຫວັງຈະຮັບຟັງພຣະວາຈາຂອງພຣະອົງຢ່າງຍິ່ງ
ບຸກຄົນຟັງພຣະສຸຣະສຽງຂອງພຣະອົງແລ້ວ
ເພິ່ງສຶກສາທຳເປັນເຫດດັບກິເລດເພື່ອຕົນ

[໓໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ)

ຖ້າເຊັ່ນນັ້ນ ທ່ານຜູ້ມີປັນຍາຮັກສາຕົນ
ມີສະຕິ ຈົ່ງກະທຳຄວາມພຽນໃນບ່ອນນີ້ແລ
ບຸກຄົນໄດ້ຟັງສຽງຈາກບ່ອນນີ້ແລ້ວ
ເພິ່ງສຶກສາທຳເປັນເຫດດັບກິເລດເພື່ອຕົນ (໔)

ຄຳວ່າ ຖ້າເຊັ່ນນັ້ນ ທ່ານ ຯລຯ ຈົ່ງກະທຳຄວາມພຽນ ອະທິບາຍວ່າ ທ່ານຈົ່ງກະທຳຄວາມພຽນ ຄື ຈົ່ງກະທຳຄວາມອຸດສາຫະ ຄວາມໝັ່ນພຽນ ຄວາມພະຍາຍາມ ຄວາມຊົງຈຳຄວາມເປັນຜູ້ກ້າ ໄດ້ແກ່ ຈົ່ງໃຫ້ສັນທະເກີດ ຄື ຈົ່ງໃຫ້ເກີດຂຶ້ນ ຕັ້ງຂຶ້ນໄວ້ ຕັ້ງຂຶ້ນໄວ້ພ້ອມ ໃຫ້ບັງເກີດ ໃຫ້ບັງເກີດຂຶ້ນ ລວມຄວາມວ່າ ຖ້າເຊັ່ນນັ້ນ ທ່ານ ຯລຯ ຈົ່ງກະທຳຄວາມພຽນ

ຄຳວ່າ ໂທຕະກະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ

ຄຳວ່າ ໃນບ່ອນນີ້ ໃນຄຳວ່າ ຜູ້ມີປັນຍາຮັກສາຕົນ ມີສະຕິ ຯລຯ ໃນບ່ອນນີ້ແລ ອະທິບາຍວ່າ ໃນຄວາມເຫັນນີ້ ຄື ໃນຄວາມຖືກໃຈນີ້ ຄວາມພໍໃຈນີ້ ຄວາມຍຶດຖືນີ້ ທຳນີ້ ວິໄນນີ້ ທຳວິໄນນີ້ ປາພົດນີ້ ພົມມະຈັນນີ້ ສັດຖຸສາດນີ້ ອັດຕະພາບນີ້ ມະນຸດໂລກນີ້

ຄຳວ່າ ຜູ້ມີປັນຍາຮັກສາຕົນ ໄດ້ແກ່ ຜູ້ມີປັນຍາຮັກສາຕົນ ຄື ຜູ້ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຮູ້ ມີຍານ ມີປັນຍາຊັດແຈ້ງ ມີປັນຍາເປັນເຄື່ອງທຳລາຍກິເລດ

ຄຳວ່າ ມີສະຕິ ອະທິບາຍວ່າ ມີສະຕິດ້ວຍເຫດ ໔ ຢ່າງ ຄື

໑. ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ ຯລຯ ບຸກຄົນນັ້ນພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ມີສະຕິ[๑] ລວມຄວາມວ່າ ຜູ້ມີປັນຍາຮັກສາຕົນ ມີສະຕິ ຯລຯ ໃນບ່ອນນີ້ແລ

ຄຳວ່າ ບຸກຄົນໄດ້ຟັງສຽງຈາກນີ້ແລ້ວ ອະທິບາຍວ່າ ບຸກຄົນໄດ້ຟັງ ສະດັບ ຮຽນ ຊົງຈຳເຂົ້າໄປກຳນົດພຣະວາຈາ ຄື ຄຳທີ່ເປັນແນວທາງ ເທດສະໜາ ຄຳສັ່ງສອນ ຄຳພ່ຳສອນຂອງເຮົາ ຈາກນີ້ ລວມຄວາມວ່າ ບຸກຄົນໄດ້ຟັງສຽງຈາກບ່ອນນີ້ແລ້ວ

## ວ່າດ້ວຍສິກຂາ ໓

ຄຳວ່າ ເພິ່ງສຶກສາ ໃນຄຳວ່າ ເພິ່ງສຶກສາທຳເປັນເຫດດັບກິເລດເພື່ອຕົນ ອະທິບາຍວ່າ ສິກຂາ ໓ ຄື

໑. ອະທິສີນສິກຂາ
໒. ອະທິຈິດຕະສິກຂາ
໓. ອະທິປັນຍາສິກຂາ ຯລຯ

ນີ້ຊື່ວ່າອະທິປັນຍາສິກຂາ

ຄຳວ່າ ທຳເປັນເຫດດັບກິເລດເພື່ອຕົນ ອະທິບາຍວ່າ ເພິ່ງສຶກສາທັງອະທິສີນສິກຂາ ທັງອະທິຈິດຕະສິກຂາ ທັງອະທິປັນຍາສິກຂາ ເພື່ອໃຫ້ຣາຄະ ໂທສະ ໂມຫະ ໂກທະ ອຸປະ ນາຫະຂອງຕົນດັບໄປ ຯລຯ ເພື່ອຄວາມສະງົບ ເຂົ້າໄປສະງົບ ສະງົບເຢັນ ເພື່ອໃຫ້ດັບ ເພື່ອສະລັດຖິ້ມ ເພື່ອຄວາມຣະງັບອະກຸສະລາພິສັງຂານທຸກປະເພດ

ສິກຂາ ໓ ເຫຼົ່ານີ້ ເມື່ອບຸກຄົນນຶກເຖິງ ຊື່ວ່າເພິ່ງສຶກສາ ເມື່ອຮູ້ ຊື່ວ່າເພິ່ງສຶກສາ ເມື່ອເຫັນ ຊື່ວ່າເພິ່ງສຶກສາ ເມື່ອພິຈາລະນາ ຊື່ວ່າເພິ່ງສຶກສາ ເມື່ອອະທິຖານຈິດ ຊື່ວ່າເພິ່ງສຶກສາ ເມື່ອນ້ອມໃຈເຊື່ອດ້ວຍສັດທາ ຊື່ວ່າເພິ່ງສຶກສາ ເມື່ອປະຄອງຄວາມພຽນ ຊື່ວ່າເພິ່ງສຶກສາ ເມື່ອຕັ້ງສະຕິ ຊື່ວ່າເພິ່ງສຶກສາ ເມື່ອຕັ້ງໃຈໝັ້ນ ຊື່ວ່າເພິ່ງສຶກສາ ເມື່ອຮູ້ແຈ້ງດ້ວຍປັນຍາ ຊື່ວ່າເພິ່ງ

ສຶກສາ ເມື່ອຮູ້ແຈ້ງທຳທີ່ຄວນຮູ້ແຈ້ງ ຊື່ວ່າເພິ່ງສຶກສາ ເມື່ອກຳນົດຮູ້ທຳທີ່ຄວນກຳນົດຮູ້ ຊື່ວ່າເພິ່ງສຶກສາ ເມື່ອລະທຳທີ່ຄວນລະ ຊື່ວ່າເພິ່ງສຶກສາ ເມື່ອຈະເລີນທຳທີ່ຄວນຈະເລີນ ຊື່ວ່າເພິ່ງສຶກສາ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າເພິ່ງສຶກສາ ຄື ເພິ່ງປະພຶດ ປະພຶດເອື້ອເຟື້ອ ປະພຶດເອື້ອເຟື້ອໂດຍຊອບ ສະມາທານປະພຶດ ລວມຄວາມວ່າ ເພິ່ງສຶກສາທຳເປັນເຫດດັບກິເລດເພື່ອຕົນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ ໂທຕະກະ)

ຖ້າເຊັ່ນນັ້ນ ທ່ານຜູ້ມີປັນຍາຮັກສາຕົນ
ມີສະຕິ ຈົ່ງກະທຳຄວາມພຽນໃນບ່ອນນີ້ແລ
ບຸກຄົນໄດ້ຟັງສຽງຈາກບ່ອນນີ້ແລ້ວ
ເພິ່ງສຶກສາທຳເປັນເຫດດັບກິເລດເພື່ອຕົນ

[໓໔] (ທ່ານໂທຕະກະທູນຖາມວ່າ)

ຂ້າພຣະອົງຍ່ອມເຫັນພຣະອົງຜູ້ບໍ່ມີເຄື່ອງກັງວົນ
ເປັນພາມ ສະເດັດຈາຣິກຢູ່ໃນເທວະໂລກແລະມະນຸດໂລກ
ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ
ຂ້າພຣະອົງຂໍນະມັດສະການພຣະອົງນັ້ນ
ຂ້າແຕ່ພຣະອົງຜູ້ສັກກະ ຂໍພຣະອົງໂຜດປົດເປື້ອງ
ຂ້າພຣະອົງຈາກຄວາມສົງໄສທັງຫຼາຍດ້ວຍເທີ້ນ (໓)

## ວ່າດ້ວຍເທບ ໓

ຄຳວ່າ ຂ້າພຣະອົງຍ່ອມເຫັນ ຯລຯ ໃນເທວະໂລກແລະມະນຸດໂລກ ອະທິບາຍວ່າ ຄຳວ່າ ເທວະ ໄດ້ແກ່ ເທບ ໓ ຈຳພວກ ຄື

໑. ສົມມຸດຕິເທບ
໒. ອຸປັດຕິເທບ
໓. ວິສຸດທິເທບ

ສົມມຸດຕິເທບ ເປັນແນວໃດ?
ຄື ພຣະຣາຊາ ພຣະຣາດຊະກຸມາຣ ພຣະຣາດຊະເທວີ ຮຽກວ່າສົມມຸດຕິເທບ

ອຸປັດຕິເທບ ເປັນແນວໃດ?

ຄື ເທວະດາຊັ້ນຈາຕຸມະຫາຣາດ ເທວະດາຊັ້ນຕາວະຕິງສາ ເທວະດາຊັ້ນຍາມາ ເທວະດາຊັ້ນດຸສິດ ເທວະດາຊັ້ນນິມມານະຣະດີ ເທວະດາຊັ້ນປະຣະນິມມິດຕະວະສະວັດດີ ເທວະດາຜູ້ນັບເນື່ອງໃນໝູ່ພົມ ແລະເທວະດາຊັ້ນສູງຂຶ້ນໄປກວ່ານັ້ນ ຮຽກວ່າອຸປັດຕິເທບ

ວິສຸດທິເທບ ເປັນແນວໃດ?

ຄື ພຣະອະຣະຫັນຕະຂີນາສົບ ຜູ້ເປັນສາວົກຂອງພຣະຕະຖາຄົດ ຮຽກວ່າວິສຸດທິເທບ ແລະພຣະປັດເຈກພຸດທະເຈົ້າ ກໍຮຽກວ່າວິສຸດທິເທບ ພຣະຜູ້ມີພຣະພາກເຈົ້າຊົງເປັນເທບ ເປັນອະຕິເທບ ແລະເປັນເທບຍິ່ງກວ່າເທບ ຍິ່ງກວ່າສົມມຸດຕິເທບ ອຸປັດຕິເທບ ແລະວິສຸດທິເທບທັງຫຼາຍ ຊົງເປັນຣາດຊະສີຍິ່ງກວ່າຣາດຊະສີ ເປັນນາກຍິ່ງກວ່ານາກ ເປັນຜູ້ນຳໝູ່ຍິ່ງກວ່າຜູ້ນຳໝູ່ ເປັນພຣະມຸນີຍິ່ງກວ່າພຣະມຸນີ ເປັນພຣະຣາຊາຍິ່ງກວ່າພຣະຣາຊາ

ຄຳວ່າ ຂ້າພຣະອົງຍ່ອມເຫັນ ຯລຯ ໃນເທວະໂລກ ແລະມະນຸດໂລກ ອະທິບາຍວ່າ ຂ້າພຣະອົງຍ່ອມເຫັນ ຄື ແນມເຫັນ ແນມເບິ່ງ ເພ່ງພິນິດ ພິຈາລະນາເຫັນພຣະອົງຜູ້ຊົງເປັນເທບ ຜູ້ຊົງເປັນອະຕິເທບ ຜູ້ຊົງເປັນເທບຍິ່ງກວ່າເທບ ລວມຄວາມວ່າ ຂ້າພຣະອົງຍ່ອມເຫັນຯລຯ ໃນເທວະໂລກ ແລະມະນຸດໂລກ

ຄຳວ່າ ບໍ່ມີເຄື່ອງກັງວົນ ໃນຄຳວ່າ ບໍ່ມີເຄື່ອງກັງວົນ ເປັນພາມ ສະເດັດ ຈາຣິກຢູ່ ອະທິບາຍວ່າ ເຄື່ອງກັງວົນຄືຣາຄະ ເຄື່ອງກັງວົນຄືໂທສະ ເຄື່ອງກັງວົນຄືໂມຫະ ເຄື່ອງກັງວົນຄືມານະ ເຄື່ອງກັງວົນຄືທິດຖິ ເຄື່ອງກັງວົນຄືກິເລດ ເຄື່ອງກັງວົນຄືທຸດຈະຣິດ ເຄື່ອງກັງວົນ ເຫຼົ່ານັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນພຣະພຸດທະເຈົ້າຈຶ່ງຊື່ວ່າບໍ່ມີເຄື່ອງກັງວົນ

## ວ່າດ້ວຍພຣະຜູ້ມີພຣະພາກເຈົ້າຊື່ວ່າເປັນພາມ

ຄຳວ່າ ເປັນພາມ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າເປັນພາມ ຍ້ອນຊົງລອຍທຳ ໗ ປະການໄດ້ແລ້ວ ຄື

໑. ລອຍສັກກາຍະທິດຖິໄດ້ແລ້ວ
໒. ລອຍວິຈິກິດສາໄດ້ແລ້ວ
໓. ລອຍສີລັບພະຕະປະຣາມາດໄດ້ແລ້ວ
໔. ລອຍຣາຄະໄດ້ແລ້ວ
໕. ລອຍໂທສະໄດ້ແລ້ວ
໖. ລອຍໂມຫະໄດ້ແລ້ວ
໗. ລອຍມານະໄດ້ແລ້ວ

ຄື ພຣະຜູ້ມີພຣະພາກເຈົ້າຊົງລອຍບາບອະກຸສົນທຳເຊິ່ງເປັນເຫດແຫ່ງຄວາມເສົ້າໝອງ ກໍ່ພົບໃໝ່ ມີຄວາມກະວົນກະວາຍ ມີທຸກເປັນວິບາກ ເປັນບ່ອນຕັ້ງແຫ່ງຊາດ ຊະຣາ ແລະມໍຣະນະຕໍ່ໄປໄດ້ແລ້ວ

(ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ສະພິຍະ)

ບຸກຄົນຜູ້ລອຍບາບທັງປວງໄດ້ແລ້ວ ເປັນຜູ້ປາສະຈາກມົນທິນ
ເປັນຜູ້ປະເສີດ ມີຈິດຕັ້ງໝັ້ນດ້ວຍສະມາທິ ດຳຣົງຕົນໝັ້ນຄົງ
ຂ້າມພົ້ນສັງສາຣະວັດ ເປັນຜູ້ບໍລິສຸດບໍລິບູນ
ບໍ່ມີຕັນຫາແລະທິດຖິອາໄສ ເປັນຜູ້ໝັ້ນຄົງ
ບັນດິດຮຽກຜູ້ນັ້ນວ່າເປັນພາມ

ຄຳວ່າ ສະເດັດຈາຣິກຢູ່ ໄດ້ແກ່ ສະເດັດທ່ຽວໄປ ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ບໍ່ມີເຄື່ອງກັງວົນ ເປັນພາມ ສະເດັດ ຈາຣິກຢູ່

ຄຳວ່າ ພຣະອົງ ໃນຄຳວ່າ ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ ຍ້ອນເຫດນັ້ນ ຂ້າພຣະອົງຂໍນະມັດສະການພຣະອົງ ເປັນຄຳທີ່ໂທຕະກະພາມຮຽກພຣະຜູ້ມີພຣະພາກເຈົ້າ

ຄຳວ່າ ຂໍນະມັດສະການ ອະທິບາຍວ່າ ຂໍນະມັດສະການ ຄື ຂໍສັກກາຣະ ເຄົາລົບ ນັບຖື ບູຊາ ດ້ວຍກາຍ ວາຈາ ໃຈ ດ້ວຍການປະຕິບັດເອື້ອປະໂຫຍດ ຫຼື ດ້ວຍການປະຕິບັດທຳຖືກຕ້ອງຕາມຫຼັກທຳ

ຄຳວ່າ ຜູ້ມີສະມັນຕະຈັກຂຸ ອະທິບາຍວ່າ ພຣະສັບພັນຍຸຕະຍານຕັດຮຽກວ່າ ສະມັນຕະຈັກຂຸ ພຣະຜູ້ມີພຣະພາກເຈົ້າຊົງປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມແລ້ວດ້ວຍພຣະສັບພັນຍຸຕະຍານນັ້ນ

(ສົມຈິງດັ່ງຄາຖາປະພັນວ່າ)

ສິ່ງໃດ ໆ ໃນໄຕຣໂລກທາດນີ້
ພຣະປັນຍາຈັກຂຸຂອງພຣະຕະຖາຄົດນັ້ນ ບໍ່ເຫັນ ບໍ່ມີເລີຍ
ອັນໜຶ່ງ ທຳມະຊາດອັນໃດ ໆ ທີ່ຄວນຮູ້
ພຣະພຸດທະຍານບໍ່ຮູ້ແຈ້ງ ກໍບໍ່ມີ
ທຳມະຊາດທີ່ຄວນແນະນຳໃດມີຢູ່
ພຣະຕະຖາຄົດໄດ້ຊົງຮູ້ທຳມະຊາດທີ່ຄວນແນະນຳນັ້ນທັງໝົດ
ຍ້ອນເຫດນັ້ນ ພຣະຕະຖາຄົດຈຶ່ງຊື່ວ່າຜູ້ມີສະມັນຕະຈັກຂຸ

ລວມຄວາມວ່າ ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ ຂ້າພຣະອົງຂໍນະມັດສະການພຣະອົງ

ຄຳວ່າ ຂ້າແຕ່ ພຣະອົງຜູ້ສັກກະ ໃນຄຳວ່າ ຂ້າແຕ່ພຣະອົງຜູ້ສັກກະ ຂໍພຣະອົງໂຜດປົດເປື້ອງຂ້າພຣະອົງຈາກຄວາມສົງໄສທັງຫຼາຍເທີ້ນ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າສະເດັດອອກບວດຈາກສາກະຍະຕະກູນ ຈຶ່ງຊື່ວ່າ ຜູ້ສັກກະ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງມັ່ງຄັ່ງ ຊົງມີຊັບຫຼາຍ ຊົງມີຊັບ ຈຶ່ງຊື່ວ່າຜູ້ສັກກະ

ພຣະອົງຊົງມີຊັບເຫຼົ່ານີ້ ຄື ຊັບຄືສັດທາ ຊັບຄືສິນ ຊັບຄືຫິຣິ ຊັບຄືໂອດຕັບປະ ຊັບຄືສຸຕະ ຊັບຄືຈາຄະ ຊັບຄືປັນຍາ ຊັບຄືສະຕິປັດຖານ ຊັບຄືສຳມັບປະທານ ຊັບຄືອິດທິບາດ ຊັບຄືອິນຊີ ຊັບຄືພະລະ ຊັບຄືໂພດຊົງ ຊັບຄືມັກ ຊັບຄືຜົນ ຊັບຄືນິບພານ ພຣະຜູ້ມີພຣະພາກເຈົ້າຊົງມັ່ງຄັ່ງ ຊົງມີຊັບຫຼາຍ ຊົງມີຊັບດ້ວຍຊັບທີ່ເປັນຣັດຕະນະຫຼາຍຢ່າງເຫຼົ່ານີ້ ຈຶ່ງຊື່ວ່າ ຜູ້ສັກກະ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງສາມາດ ຄື ຊົງອົງອາດ ອາດຫານ ມີຄວາມສາມາດ ກ້າ ກ້າຫານ ກ້າວໜ້າ ບໍ່ຢ້ານ ບໍ່ຫວາດສຽວ ບໍ່ສະດຸ້ງ ບໍ່ໜີ ຊົງລະໄພ ແລະຄວາມຢ້ານກົວໄດ້ແລ້ວ ໝົດຄວາມຂົນພອງສະຫຍອງເກົ້າ ຈຶ່ງຊື່ວ່າຜູ້ສັກກະ

## ວ່າດ້ວຍຄວາມສົງໄສ

ວິຈິກິດສາ ຮຽກວ່າ ຄວາມສົງໄສ ໄດ້ແກ່ ຄວາມສົງໄສໃນທຸກ ຄວາມສົງໄສໃນທຸກຂະສະມຸໄທ ຄວາມສົງໄສໃນທຸກຂະນິໂຣທະ ຄວາມສົງໄສໃນທຸກຂະນິໂຣທະຄາມິນີປະຕິປະທາ ຄວາມສົງໄສໃນສ່ວນເບື້ອງຕົ້ນ ຄວາມສົງໄສໃນສ່ວນເບື້ອງປາຍ ຄວາມສົງໄສທັງໃນສ່ວນເບື້ອງຕົ້ນ ແລະສ່ວນເບື້ອງປາຍ ຄວາມສົງໄສໃນປະຕິດຈະສະມຸບບາດວ່າ ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີຄວາມສົງໄສ ກິຣິຍາທີ່ສົງໄສ ພາວະທີ່ສົງໄສ ຄວາມເຄືອບແຄງ ຄວາມລັງເລ ຄວາມເຫັນເປັນ ໒ ຝ່າຍ ໒ ທາງ ຄວາມບໍ່ແນ່ໃຈ ຄວາມຍຶດຖືຫຼາຍຢ່າງ ຄວາມບໍ່ຕົກລົງໃຈ ຄວາມຕັດສິນໃຈບໍ່ໄດ້ ຄວາມກຳນົດຖືບໍ່ໄດ້ ຄວາມຫວາດຫວັ່ນແຫ່ງຈິດ ຄວາມຕິດຂັດໃນໃຈເຫັນປານນີ້

ຄຳວ່າ ຂ້າແຕ່ພຣະອົງຜູ້ສັກກະ ຂໍພຣະອົງໂຜດປົດເປື້ອງຂ້າພຣະອົງຈາກຄວາມສົງໄສທັງຫຼາຍເທີ້ນ ອະທິບາຍວ່າ ຂໍພຣະອົງໂຜດປົດຂ້າພຣະອົງ ໂຜດປົດເປື້ອງຂ້າພຣະອົງ ຄື ໂຜດປ່ອຍ ປົດປ່ອຍ ຖອນ ດຶງຮັ້ງຂ້າພຣະອົງ ໄດ້ແກ່ ຊົງໃຫ້ຂ້າພຣະອົງອອກຈາກລູກສອນຄືຄວາມສົງໄສເທີ້ນ ລວມຄວາມວ່າ ຂ້າແຕ່ພຣະອົງຜູ້ສັກກະ ຂໍພຣະອົງໂຜດປົດເປື້ອງຂ້າພຣະອົງຈາກຄວາມສົງໄສທັງຫຼາຍເທີ້ນ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ຂ້າພຣະອົງຍ່ອມເຫັນພຣະອົງຜູ້ບໍ່ມີເຄື່ອງກັງວົນ
ເປັນພາມ ສະເດັດຈາຣິກຢູ່ໃນເທວະໂລກແລະມະນຸດໂລກ
ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ
ຂ້າພຣະອົງຂໍນະມັດສະການພຣະອົງນັ້ນ

ຂ້າແຕ່ ພຣະອົງຜູ້ສັກກະ ຂໍພຣະອົງໂຜດປົດເປື້ອງ
ຂ້າພຣະອົງຈາກຄວາມສົງໄສທັງຫຼາຍເທີ້ນ

[໔໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ໂທຕະກະ ເຮົາບໍ່ສາມາດປົດເປື້ອງຜູ້ໃດ
ຜູ້ມີຄວາມສົງໄສໃນໂລກໄດ້
ແຕ່ທ່ານເມື່ອຮູ້ທົ່ວເຖິງທຳອັນປະເສີດ
ກໍຈະເພິ່ງຂ້າມໂອຄະນີ້ໄດ້ເອງດ້ວຍປະການແນວນີ້ (໔)

ຄຳວ່າ ເຮົາບໍ່ສາມາດປົດເປື້ອງ ອະທິບາຍວ່າ ເຮົາບໍ່ອາດຈະປົດ ປົດເປື້ອງ ປ່ອຍ ປົດ ປ່ອຍ ຖອນທ່ານຂຶ້ນ ໄດ້ແກ່ ໃຫ້ທ່ານຖອນອອກ ໃຫ້ຂຶ້ນຈາກລູກສອນຄືຄວາມສົງໄສໄດ້ ລວມຄວາມວ່າ ເຮົາບໍ່ສາມາດປົດເປື້ອງ ແນວນີ້ແດ່

ອີກໄນໜຶ່ງ ເຮົາບໍ່ອາດ ຄື ບໍ່ສາມາດ ບໍ່ອຸດສາຫະ ບໍ່ພະຍາຍາມ ບໍ່ເຮັດຄວາມອຸດສາຫະ ບໍ່ເຮັດຄວາມໝັ່ນພຽນ ບໍ່ເຮັດຄວາມພະຍາຍາມ ບໍ່ເຮັດຄວາມຊົງຈຳ ບໍ່ເຮັດຄວາມເປັນຜູ້ກ້າໄດ້ແກ່ ບໍ່ໃຫ້ສັນທະເກີດ ຄື ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນ ເພື່ອສະແດງທຳ (ປົດເປື້ອງ) ບຸກຄົນຜູ້ບໍ່ມີສັດທາ ບໍ່ມີສັນທະ ຂີ້ຄ້ານ ລະຄວາມພຽນ ບໍ່ປະຕິບັດ ລວມຄວາມວ່າ ເຮົາບໍ່ສາມາດປົດເປື້ອງ ແນວນີ້ແດ່

ອີກໄນໜຶ່ງ ບໍ່ມີໃຜອື່ນທີ່ຈະເຮັດໃຫ້ສັດເຫຼົ່ານັ້ນຫຼຸດພົ້ນໄດ້ ຖ້າສັດເຫຼົ່ານັ້ນຈະເພິ່ງຫຼຸດພົ້ນໄດ້ ສັດເຫຼົ່ານັ້ນເມື່ອປະຕິບັດຊອບ ປະຕິບັດເໝາະສົມ ປະຕິບັດບໍ່ເປັນຂ້າເສິກ ປະຕິບັດເອື້ອປະໂຫຍດ ປະຕິບັດທຳຖືກຕ້ອງຕາມຫຼັກທຳດ້ວຍຕົນເອງ ກໍຈະເພິ່ງຫຼຸດພົ້ນໄດ້ເອງ ດ້ວຍເຫື່ອແຮງ ດ້ວຍກຳລັງ ດ້ວຍຄວາມພຽນ ດ້ວຍຄວາມບາກບັ່ນ ດ້ວຍເຫື່ອແຮງຂອງບຸຣຸດ ດ້ວຍກຳລັງຂອງບຸຣຸດ ດ້ວຍຄວາມພຽນຂອງບຸຣຸດ ດ້ວຍຄວາມບາກບັ່ນຂອງບຸຣຸດຂອງຕົນເອງເທົ່ານັ້ນ ລວມຄວາມວ່າ ເຮົາບໍ່ສາມາດປົດເປື້ອງ ແນວນີ້ແດ່

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ຈຸນທະ ຂໍ້ທີ່ບຸກຄົນເຊິ່ງຕົນເອງກໍຈົມດິ່ງຢູ່ຈັກດຶງຜູ້ອື່ນທີ່ຈົມດິ່ງຢູ່ແລ້ວຂຶ້ນມາໄດ້ ເປັນໄປບໍ່ໄດ້ ຂໍ້ທີ່ບຸກຄົນຜູ້ບໍ່ໄດ້ຝຶກຝົນ ບໍ່ໄດ້ອົບຮົມ ຍັງບໍ່ໄດ້ດັບກິເລດດ້ວຍຕົນເອງ ຈັກຝຶກຝົນ ອົບຮົມຜູ້ອື່ນ ເຮັດຜູ້ອື່ນໃຫ້ດັບກິເລດ ເປັນໄປບໍ່ໄດ້ເລີຍ ລວມຄວາມວ່າ ເຮົາບໍ່ສາມາດປົດເປື້ອງແນວນີ້ແດ່ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າ ຕັດໄວ້ວ່າ

ຕົນເຮັດຊົ່ວເອງ ກໍເສົ້າໝອງເອງ ບໍ່ເຮັດຊົ່ວ ກໍບໍລິສຸດເອງ
ຄວາມບໍລິສຸດແລະບໍ່ບໍລິສຸດເປັນຂອງສະເພາະຕົນ

ຄົນອື່ນຈະເຮັດຄົນອື່ນໃຫ້ບໍລິສຸດບໍ່ໄດ້

ລວມຄວາມວ່າ ເຮົາບໍ່ສາມາດປົດເປື້ອງ ແມ່ນດ້ວຍປະການແນວນີ້

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ສັນນັ້ນຄືກັນພາມ ນິບພານມີຢູ່ ທາງໄປນິບພານມີຢູ່ ເຮົາ (ຕະຖາຄົດ) ຜູ້ຊັກຊວນມີຢູ່ ເມື່ອເປັນເຊັ່ນນີ້

ສາວົກທີ່ເຮົາສັ່ງສອນຢູ່ແນວນີ້ ພ່ຳສອນຢູ່ແນວນີ້ ບາງພວກສຳເລັດນິບພານອັນເຖິງທີ່ສຸດໂດຍສ່ວນດຽວ ບາງພວກກໍບໍ່ສຳເລັດ ໃນເລື້ອງນີ້ ເຮົາຈະເຮັດແນວໃດໄດ້ ຕະຖາຄົດກໍເປັນແຕ່ຜູ້ບອກທາງ ພຣະພຸດທະເຈົ້າກໍພຽງບອກທາງໃຫ້ ບຸກຄົນຜູ້ປະຕິບັດດ້ວຍຕົນເອງ ຈະເພິ່ງຫຼຸດພົ້ນໄດ້ ດ້ວຍປະການແນວນີ້ ໔ ລວມຄວາມວ່າ ເຮົາບໍ່ສາມາດປົດເປື້ອງ ແນວນີ້ແດ່

ຄຳວ່າ ໂທຕະກະ ຯລຯ ຜູ້ໃດ ຜູ້ມີຄວາມສົງໄສໃນໂລກໄດ້ ອະທິບາຍວ່າ ບຸກຄົນຜູ້ມີຄວາມສົງໄສ ຄື ມີຄວາມແຄງໃຈ ມີຄວາມຣະແວງ ມີຄວາມເຫັນສອງຈິດສອງໃຈ ມີຄວາມຂ້ອງໃຈ

ຄຳວ່າ ຜູ້ໃດ ໄດ້ແກ່ ຜູ້ໃດ ຄື ເປັນກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາ ຫຼື ມະນຸດກໍຕາມ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ຯລຯ ອາຍະຕະນະໂລກ ລວມຄວາມວ່າ ໂທຕະກະ ຯລຯ ຜູ້ໃດ ຜູ້ມີຄວາມສົງໄສໃນໂລກໄດ້

ຄຳວ່າ ແຕ່ທ່ານເມື່ອຮູ້ທົ່ວເຖິງທຳອັນປະເສີດ ອະທິບາຍວ່າ ອະມະຕະນິບພານຕັດຮຽກວ່າ ທຳອັນປະເສີດ ໄດ້ແກ່ ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ

ຄຳວ່າ ອັນປະເສີດ ໄດ້ແກ່ ທຳອັນເລີດ ປະເສີດ ວິເສດສຸດ ຊັ້ນແນວໜ້າ ສູງສຸດ ປະເສີດ

ຄຳວ່າ ເມື່ອຮູ້ ໄດ້ແກ່ ເມື່ອຮູ້ ຄື ເມື່ອຮູ້ຊັດແຈ້ງ ຮູ້ສະເພາະ ແທງຕະຫຼອດ ລວມຄວາມວ່າ ແຕ່ທ່ານເມື່ອຮູ້ທົ່ວເຖິງທຳອັນປະເສີດ

ຄຳວ່າ ທ່ານ ຯລຯ ກໍຈະເພິ່ງຂ້າມໂອຄະນີ້ໄດ້ເອງດ້ວຍປະການແນວນີ້ອະທິບາຍວ່າ ທ່ານກໍເພິ່ງຂ້າມ ຄື ກ້າວລ່ວງ ລ່ວງເລີຍກາໂມຄະ ພະໂວຄະ ທິດໂຖຄະ ອະວິດໂຊຄະໄດ້ ດ້ວຍປະການແນວນີ້ ລວມຄວາມວ່າ ທ່ານ ຯລຯ ກໍຈະເພິ່ງຂ້າມໂອຄະນີ້ ດ້ວຍປະການແນວນີ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ໂທຕະກະ ເຮົາບໍ່ສາມາດປົດເປື້ອງຜູ້ໃດ<br>
ຜູ້ມີຄວາມສົງໄສໃນໂລກໄດ້<br>
ແຕ່ທ່ານເມື່ອຮູ້ທົ່ວເຖິງທຳອັນປະເສີດ<br>
ກໍຈະເພິ່ງຂ້າມໂອຄະນີ້ໄດ້ເອງດ້ວຍປະການແນວນີ້

[໕໔] (ທ່ານໂທຕະກະທູນຖາມວ່າ)

ຂ້າແດ່ ພຣະອົງຜູ້ປະເສີດ
ຂໍພຣະອົງຊົງພຣະກະລຸນາຕັດສອນວິເວກທຳ
ທີ່ຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້
ແລະໂດຍວິທີທີ່ຂ້າພຣະອົງບໍ່ຂັດຂ້ອງເໝືອນອາກາດ
ຂ້າພຣະອົງຈະເພິ່ງສະງົບຢູ່ໃນບ່ອນນີ້ແລ
ເປັນຜູ້ບໍ່ຢຶດອາໄສ ທ່ຽວໄປຢູ່ (໔)

ຄຳວ່າ ຂ້າແດ່ ພຣະອົງຜູ້ປະເສີດ ຂໍພຣະອົງ ຯລຯ ຕັດສອນ ໃນຄຳວ່າ ຂ້າແດ່ພຣະອົງຜູ້ ປະເສີດ ຂໍພຣະອົງຊົງພຣະກະລຸນາຕັດສອນ ອະທິບາຍວ່າ

ຂ້າແດ່ ພຣະອົງຜູ້ປະເສີດ ຂໍພຣະອົງໂຜດຕັດສອນ ຄື ຂ້າແດ່ພຣະອົງຜູ້ປະເສີດຂໍພຣະອົງໂຜດຊົງອະນຸເຄາະ ຂ້າແດ່ພຣະອົງຜູ້ປະເສີດ ຂໍພຣະອົງໂຜດຊົງເອື້ອເຟື້ອ ລວມຄວາມວ່າ ຂ້າແດ່ພຣະອົງຜູ້ປະເສີດ ຂໍພຣະອົງ ຯລຯ ຕັດສອນ

ຄຳວ່າ ຊົງພຣະກະລຸນາ ໄດ້ແກ່ ຊົງພຣະກະລຸນາ ຄື ຊົງອີດູ ຮັກສາ ອະນຸເຄາະ ເອື້ອເຟື້ອ ລວມຄວາມວ່າ ຂ້າແດ່ພຣະອົງຜູ້ປະເສີດ ຂໍພຣະອົງຊົງພຣະກະລຸນາຕັດສອນ

ຄຳວ່າ ວິເວກທຳ ທີ່ຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້ ອະທິບາຍວ່າ ອະມະຕະນິບພານຕັດຮຽກວ່າ ວິເວກທຳ ໄດ້ແກ່ ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ

ຄຳວ່າ ທີ່ຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້ ໄດ້ແກ່ ທີ່ຂ້າພຣະອົງເພິ່ງຮູ້ ຄື ເພິ່ງຮູ້ທົ່ວ ຮູ້ສະເພາະ ແທງຕະຫຼອດ ບັນລຸ ຖືກຕ້ອງ ເຮັດໃຫ້ແຈ້ງ ລວມຄວາມວ່າ ວິເວກທຳ ທີ່ຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້

ຄຳວ່າ ແລະໂດຍວິທີທີ່ຂ້າພຣະອົງບໍ່ຂັດຂ້ອງເໝືອນອາກາດ ອະທິບາຍວ່າ ອາກາດບໍ່ຂັດຂ້ອງ ຄື ຈັບຕ້ອງບໍ່ໄດ້ ບໍ່ຕິດ ບໍ່ພົວພັນ ສັນໃດ ຂ້າພຣະອົງບໍ່ຂັດຂ້ອງ ຄື ບໍ່ຢຶດຖື ບໍ່ຕິດ ບໍ່ພົວພັນ ສັນນັ້ນ ລວມຄວາມວ່າ ບໍ່ຂັດຂ້ອງເໝືອນອາກາດ ແນວນີ້ແດ່ ອາກາດຍ້ອມບໍ່ໄດ້ດ້ວຍນ້ຳຄັ່ງ ນ້ຳຂີ້ໝິ້ນ ສີຂຽວ ຫຼື ສີນ້ຳຝາດ ສັນໃດ ຂ້າພຣະອົງ ບໍ່ກຳໜັດ ບໍ່ຂັດເຄືອງ ບໍ່ລຸ້ມຫຼົງ ບໍ່ເສົ້າໝອງ ສັນນັ້ນ ລວມຄວາມວ່າ ບໍ່ຂັດຂ້ອງເໝືອນອາກາດ ແນວນີ້ແດ່

ອາກາດບໍ່ກຳເຣີບ ບໍ່ພະຍາບາດ ບໍ່ຫົດຫູ່ ບໍ່ກະທົບກະທັ່ງ ສັນໃດ ຂ້າພຣະອົງບໍ່ໂກດບໍ່ພະຍາບາດ ບໍ່ຫົດຫູ່ ບໍ່ກະທົບ ບໍ່ກະທັ່ງ ສັນນັ້ນ ລວມຄວາມວ່າ ບໍ່ຂັດຂ້ອງເໝືອນອາກາດແນວນີ້ແດ່

ຄຳວ່າ ຂ້າພຣະອົງຈະເພິ່ງສະງົບຢູ່ໃນບ່ອນນີ້ແລ ໃນຄຳວ່າ ຂ້າພຣະອົງຈະເພິ່ງສະງົບຢູ່ໃນບ່ອນນີ້ແລ ເປັນຜູ້ບໍ່ຢຶດອາໄສ ທ່ຽວໄປຢູ່ ອະທິບາຍວ່າ ເປັນຜູ້ຢູ່ໃນບ່ອນນີ້ແລ ຄື ເປັນຜູ້ນັ່ງຢູ່ໃນບ່ອນນີ້ແລ ເປັນຜູ້ນັ່ງຢູ່ແລ້ວເທິງອາສະນະນີ້ແລ ເປັນຜູ້ນັ່ງຢູ່ໃນບໍລິສັດນີ້ແລ ລວມຄວາມວ່າ ຂ້າພຣະອົງຈະເພິ່ງສະງົບຢູ່ໃນບ່ອນນີ້ແລ ແນວນີ້ແດ່

ອີກໄນໜຶ່ງ ສະງົບໄດ້ແລ້ວ ຄື ເຂົ້າໄປສະງົບໄດ້ແລ້ວ ສະງົບເຢັນແລ້ວ ດັບໄດ້ແລ້ວ ສະງົບຣະງັບໄດ້ແລ້ວ ໃນບ່ອນນີ້ແລ ລວມຄວາມວ່າ ສະງົບຢູ່ໃນບ່ອນນີ້ແລ ແນວນີ້ແດ່

ຄຳວ່າ ເປັນຜູ້ບໍ່ຢຶດອາໄສ ອະທິບາຍວ່າ ການອາໄສ ໒ ຢ່າງ ຄື (໑) ການອາໄສດ້ວຍອຳນາດຕັນຫາ (໒) ການອາໄສດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າການອາໄສດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າການອາໄສດ້ວຍອຳນາດທິດຖິ

ຜູ້ໃດລະການອາໄສດ້ວຍອຳນາດຕັນຫາ ສະລັດຖິ້ມການອາໄສດ້ວຍອຳນາດທິດຖິ ບໍ່ອາໄສຕາ ບໍ່ອາໄສຫູ ບໍ່ອາໄສດັງ ບໍ່ອາໄສລີ້ນ ບໍ່ອາໄສກາຍ ບໍ່ອາໄສໃຈ ບໍ່ຢຶດອາໄສ ຄື ບໍ່ອາໄສ ບໍ່ຕິດແລ້ວ ບໍ່ຕິດແໜ້ນແລ້ວ ບໍ່ຕິດໃຈ ໃນຮູບ ຯລຯ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ທຳມາຣົມ ຯລຯ ຕະກູນ ຯລຯ ຄະນະ ຯລຯ ອາວາດ ຯລຯ ລາບ ຯລຯ ຍົດ ຯລຯ ສັນເສີນ ຯລຯ ສຸກ ຯລຯ ຈີວອນ ຯລຯ ບິນທະບາດ ຯລຯ ເສນາສະນະ ຯລຯ ຄິລານະປັດໄຈເພສັດບໍຣິຂານ ຯລຯ ກາມທາດ ຯລຯ ຮູບທາດ ຯລຯ ອະຮູບທາດ ຯລຯ ກາມພົບ ຯລຯ ຮູບພົບ ຯລຯ ອະຮູບພົບ ຯລຯ ສັນຍາພົບ ຯລຯ ອະສັນຍາພົບ ຯລຯ ເນວະສັນຍານາສັນຍາພົບ ຯລຯ ເອກະໂວກາຣະພົບ ຯລຯ ຈະຕຸໂວກາຣະພົບ ຯລຯ ປັນຈະໂວກາຣະພົບ ຯລຯ ອະດີດ ຯລຯ ອະນາຄົດ ຯລຯ ປັດຈຸບັນ ຯລຯ ຮູບທີ່ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ໄດ້ຮັບຮູ້ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່

ຄຳວ່າ ທ່ຽວໄປຢູ່ ໄດ້ແກ່ ທ່ຽວໄປຢູ່ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ຂ້າພຣະອົງຈະເພິ່ງສະງົບຢູ່ໃນບ່ອນນີ້ແລ ເປັນຜູ້ບໍ່ຢຶດອາໄສ ທ່ຽວໄປຢູ່ ດ້ວຍເຫດນັ້ນ ພາມນັ້ນ ຈຶ່ງຂາບທູນວ່າ

ຂ້າແຕ່ ພຣະອົງຜູ້ປະເສີດ
ຂໍພຣະອົງຊົງພຣະກະລຸນາຕັດສອນວິເວກທຳ
ທີ່ຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້
ແລະໂດຍວິທີທີ່ຂ້າພຣະອົງບໍ່ຂັດຂ້ອງເໝືອນອາກາດ
ຂ້າພຣະອົງຈະເພິ່ງສະງົບຢູ່ໃນບ່ອນນີ້ແລ
ເປັນຜູ້ບໍ່ຢຶດອາໄສ ທ່ຽວໄປຢູ່

[໓໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ)

ບຸກຄົນຮູ້ແຈ້ງຄວາມສະຫງົບໃດແລ້ວ ມີສະຕິ
ທ່ຽວໄປຢູ່ ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້
ເຮົາຈັກກ່າວຄວາມສະຫງົບນັ້ນ ທີ່ຮູ້ປະຈັກດ້ວຍຕົນເອງ
ໃນທຳທີ່ເຮົາເຫັນແລ້ວ ແກ່ທ່ານ (໖)

ຄຳວ່າ ເຮົາຈັກກ່າວຄວາມສະຫງົບນັ້ນ ຯລຯ ແກ່ທ່ານ ອະທິບາຍວ່າ ເຮົາຈັກກ່າວ ຄື ຊີ້ແຈ່ງ ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດ ຄວາມສະຫງົບ ຄື ຄວາມເຂົ້າໄປສະຫງົບ ຄວາມສະຫງົບເຢັນ ຄວາມດັບ ຄວາມສະຫງົບຣະງັບຣາຄະ ຄວາມສະຫງົບໂທສະ ຄວາມສະຫງົບໂມຫະ ຯລຯ

ເຮົາຈັກກ່າວ ຊີ້ແຈ່ງ ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດຄວາມສະຫງົບ ຄື ຄວາມເຂົ້າໄປສະຫງົບ ຄວາມສະຫງົບເຢັນ ຄວາມດັບ ຄວາມສະຫງົບຣະງັບໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ອິດສາ ຯລຯ ມັດສະຣິຍະ ຯລຯ ມາຍາ ຯລຯ ສາເຖີຍຍະ ຯລຯ ຖຳພະ ຯລຯ ສາຣຳພະ ຯລຯ ມານະ ຯລຯ ອະຕິມານະ ຯລຯ ມະທະ ຯລຯ ປະມາທະ ຯລຯ

ເຮົາຈັກກ່າວ ຊີ້ແຈ່ງ ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດຄວາມສະຫງົບ ຄື ຄວາມເຂົ້າໄປສະຫງົບ ຄວາມສະຫງົບເຢັນ ຄວາມດັບ ຄວາມສະຫງົບ ຣະງັບກິເລດທຸກຊະນິດ ຯລຯ ທຸດຈະຣິດທຸກທາງ ຯລຯ ຄວາມກະວົນກະວາຍທຸກຢ່າງ ຯລຯ ຄວາມຮ້ອນຮົນທຸກສະຖານ ຯລຯ ຄວາມເດືອດຮ້ອນທຸກປະການ ຯລຯ ອະກຸສະລາພິສັງຂານທຸກປະເພດ ລວມຄວາມວ່າ ເຮົາຈັກກ່າວຄວາມສະຫງົບນັ້ນ ຯລຯ ແກ່ທ່ານ

ຄຳວ່າ ໂທຕະກະ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ

ຄຳວ່າ ໃນທຳທີ່ເຮົາເຫັນແລ້ວ ໃນຄຳວ່າ ທີ່ຮູ້ປະຈັກດ້ວຍຕົນເອງໃນທຳທີ່ເຮົາເຫັນແລ້ວ ອະທິບາຍວ່າ ໃນທຳທີ່ເຮົາເຫັນແລ້ວ ຄື ໃນທຳທີ່ເຮົາຮູ້ແລ້ວ ໃນທຳທີ່ເຮົາທຽບຄຽງແລ້ວ ໃນທຳທີ່ເຮົາພິຈາລະນາແລ້ວ ໃນທຳທີ່ເຮົາເຮັດໃຫ້ແຈ້ງແລ້ວ ໃນທຳທີ່ເຮົາເຮັດໃຫ້ກະຈ່າງແລ້ວ ໄດ້ແກ່ ໃນທຳທີ່ເຮົາເຫັນແລ້ວ ໃນທຳທີ່ເຮົາຮູ້ແລ້ວ ໃນທຳທີ່ເຮົາທຽບຄຽງແລ້ວ ໃນທຳທີ່ເຮົາພິຈາລະນາ

ແລ້ວ ໃນທຳທີ່ເຮົາເຮັດໃຫ້ແຈ້ງແລ້ວ ໃນທຳທີ່ເຮົາເຮັດໃຫ້ກະຈ່າງແລ້ວວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ໄດ້ແກ່ ໃນທຳທີ່ເຮົາເຫັນແລ້ວ ໃນທຳທີ່ເຮົາຮູ້ແລ້ວ ໃນທຳທີ່ເຮົາທຽບຄຽງແລ້ວ ໃນທຳທີ່ເຮົາພິຈາລະນາແລ້ວ ໃນທຳທີ່ເຮົາເຮັດໃຫ້ແຈ້ງແລ້ວ ໃນທຳທີ່ເຮົາເຮັດໃຫ້ກະຈ່າງແລ້ວວ່າ ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດ ລ້ວນມີຄວາມດັບໄປເປັນທຳມະດາ ລວມຄວາມວ່າ ໃນທຳທີ່ເຮົາເຫັນແລ້ວ ແນວນີ້ແດ່

ອີກໄນໜຶ່ງ ເຮົາຈັກກ່າວເຖິງທຸກ ໃນທຸກທີ່ໄດ້ເຫັນແລ້ວ ຈັກກ່າວເຖິງສະມຸໄທ ໃນສະມຸໄທທີ່ໄດ້ເຫັນແລ້ວ ຈັກກ່າວເຖິງມັກ ໃນມັກທີ່ໄດ້ເຫັນແລ້ວ ຈັກກ່າວເຖິງນິໂຣດໃນນິໂຣດທີ່ໄດ້ເຫັນແລ້ວ ລວມຄວາມວ່າ ໃນທຳທີ່ເຮົາເຫັນແລ້ວ ແນວນີ້ແດ່

ອີກໄນໜຶ່ງ (ເຮົາຈັກກ່າວທຳ) ທີ່ເຫັນໄດ້ເອງ ບໍ່ຂຶ້ນຢູ່ກັບການເວລາ ເຊີນມາເບິ່ງໄດ້ ຄວນນ້ອມເຂົ້າມາໃນຕົນ ວິນຍູຊົນເພິ່ງຮູ້ດ້ວຍຕົນເອງໃນທຳທີ່ເຮົາເຫັນແລ້ວ ລວມຄວາມວ່າ ໃນທຳທີ່ເຮົາເຫັນແລ້ວ ແນວນີ້ແດ່

ຄຳວ່າ ທີ່ຮູ້ປະຈັກດ້ວຍຕົນເອງ ອະທິບາຍວ່າ ເຮົາຈັກກ່າວທຳທີ່ຮູ້ດ້ວຍຕົນເອງ ທຳທີ່ປະຈັກແກ່ຕົນເອງ ບໍ່ແມ່ນໂດຍການເຊື່ອຜູ້ອື່ນວ່າທຳນີ້ເປັນດັ່ງນີ້ ໆ ຄື ບໍ່ແມ່ນໂດຍການເລົ່າລື ບໍ່ແມ່ນໂດຍການຖືສືບ ໆ ກັນມາ ບໍ່ແມ່ນໂດຍການອ້າງຕຳລາ ບໍ່ແມ່ນໂດຍຕັກກະ ບໍ່ແມ່ນໂດຍການອະນຸມານ ບໍ່ແມ່ນໂດຍການຄິດຕອງຕາມແນວເຫດຜົນ ບໍ່ແມ່ນຍ້ອນເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ລວມຄວາມວ່າ ທີ່ຮູ້ປະຈັກດ້ວຍຕົນເອງໃນທຳທີ່ເຮົາເຫັນແລ້ວ

ຄຳວ່າ ບຸກຄົນຮູ້ແຈ້ງຄວາມສະງົບໃດແລ້ວ ມີສະຕິ ທ່ຽວໄປຢູ່ ອະທິບາຍວ່າ ບຸກຄົນຮູ້ແຈ້ງແລ້ວ ຄື ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວ ໄດ້ແກ່ ບຸກຄົນຮູ້ແຈ້ງແລ້ວ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ໄດ້ແກ່ ບຸກຄົນຮູ້ແລ້ວ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ ແຈ່ມແຈ້ງແລ້ວວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ຄຳວ່າ ມີສະຕິ ໄດ້ແກ່ ມີສະຕິດ້ວຍເຫດ ໔ ຢ່າງ ຄື (໑) ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ ຯລຯ ຜູ້ນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຣຽກວ່າ ມີສະຕິ

ຄຳວ່າ ທ່ຽວໄປຢູ່ ໄດ້ແກ່ ທ່ຽວໄປຢູ່ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ບຸກຄົນຮູ້ແຈ້ງຄວາມສະງົບໃດແລ້ວ ມີສະຕິ ທ່ຽວໄປຢູ່ທຸກຂະນະ

ຄຳວ່າ ເພິ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາໃນໂລກໄດ້ ອະທິບາຍວ່າ ຕັນຫາຕັດຣຽກວ່າ ວິສັດຕິກາ ຄື ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຄຳວ່າ ວິສັດຕິກາ ອະທິບາຍວ່າ ຕັນຫາຊື່ວ່າວິສັດຕິກາ ຍ້ອນມີຄວາມໝາຍແນວໃດ ຯລຯ ຊ່ານໄປ ຂະຫຍາຍໄປ ສັນນັ້ນ ຈຶ່ງຊື່ວ່າວິສັດຕິກາ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ຯລຯ ອາຍະຕະນະໂລກ

ຄຳວ່າ ເພິ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາໃນໂລກໄດ້ ອະທິບາຍວ່າ ບຸກຄົນຜູ້ມີສະຕິ ເພິ່ງຂ້າມ ຄື ເພິ່ງຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍຕັນຫາທີ່ຊື່ວ່າ ວິສັດຕິກາໃນໂລກໄດ້ ລວມຄວາມວ່າ ເພິ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາໃນໂລກໄດ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ)

ບຸກຄົນຮູ້ແຈ້ງຄວາມສະງົບໃດແລ້ວ ມີສະຕິ
ທ່ຽວໄປຢູ່ ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້
ເຮົາຈັກກ່າວຄວາມສະງົບນັ້ນ ທີ່ຮູ້ປະຈັກດ້ວຍຕົນເອງ
ໃນທຳທີ່ເຮົາເຫັນແລ້ວ ແກ່ທ່ານ

[໕໙] (ທ່ານໂທຕະກະທູນຖາມວ່າ)

ຂ້າແຕ່ ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຂ້າພຣະອົງພໍໃຈຄວາມສະງົບອັນສູງສຸດນັ້ນ
ທີ່ບຸກຄົນຮູ້ແຈ້ງແລ້ວ ມີສະຕິທ່ຽວໄປຢູ່
ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້ (໗)

ຄຳວ່າ ນັ້ນ ໃນຄຳວ່າ ຂ້າພຣະອົງພໍໃຈຯລຯນັ້ນ ອະທິບາຍວ່າ ຂ້າພຣະອົງພໍໃຈ ພໍໃຈ ຄື ເບີກບານໃຈ ອະນຸໂມທະນາ ຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງພຣະດຳຣັດ ຄຳທີ່ເປັນແນວທາງ ເທດສະໜາ ຄຳສັ່ງສອນ ຄຳພ່ຳສອນ ລວມຄວາມວ່າ ຂ້າພຣະອົງພໍໃຈ ຯລຯ ນັ້ນ

ຄຳວ່າ ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ໃນຄຳວ່າ ຂ້າແຕ່ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ຯລຯ ຄວາມສະງົບອັນສູງສຸດ ອະທິບາຍວ່າ

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ແນວໃດ?

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາສີນຂັນໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ຯລຯ ພຣະຜູ້ຊົງອົງອາດກວ່ານໍຣະຊົນປະທັບຢູ່ບ່ອນໃດ ຈຶ່ງຊື່ວ່າຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ຄຳວ່າ ຄວາມສະງົບອັນສູງສຸດ ອະທິບາຍວ່າ ອະມະຕະນິບພານຕັດຮຽກວ່າ ຄວາມສະງົບ ໄດ້ແກ່ ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ

ຄຳວ່າ ສູງສຸດ ໄດ້ແກ່ ເລີດ ປະເສີດ ວິເສດສຸດ ຊັ້ນແນວໜ້າ ສູງສຸດ ປະເສີດ ລວມຄວາມວ່າ ຂ້າແຕ່ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ຯລຯ ຄວາມສະງົບອັນສູງສຸດ

ຄຳວ່າ ທີ່ບຸກຄົນຮູ້ແຈ້ງແລ້ວ ມີສະຕິທ່ຽວໄປຢູ່ ອະທິບາຍວ່າ ບຸກຄົນຮູ້ແຈ້ງແລ້ວ ຄືທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ໄດ້ແກ່ບຸກຄົນຮູ້ແຈ້ງແລ້ວ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ຄຳວ່າ ມີສະຕິ ໄດ້ແກ່ ມີສະຕິດ້ວຍເຫດ ໔ ຢ່າງ ຄື (໑) ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ ຯລຯ ບຸກຄົນນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ມີສະຕິ

ຄຳວ່າ ທ່ຽວໄປຢູ່ ໄດ້ແກ່ ທ່ຽວໄປຢູ່ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ທີ່ບຸກຄົນຮູ້ແຈ້ງແລ້ວ ມີສະຕິທ່ຽວໄປຢູ່

ຄຳວ່າ ເພິ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາໃນໂລກໄດ້ ອະທິບາຍວ່າ ຕັນຫາຕັດຮຽກວ່າວິສັດຕິກາ ຄື ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນຄື ໂລພະ

ຄຳວ່າ ວິສັດຕິກາ ອະທິບາຍວ່າ ຕັນຫາຊື່ວ່າວິສັດຕິກາ ຍ້ອນມີຄວາມໝາຍແນວໃດ ຯລຯ ຊ່ານໄປ ຂະຫຍາຍໄປ ສັນນັ້ນ ຈຶ່ງຊື່ວ່າວິສັດຕິກາ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ຯລຯ ອາຍະຕະນະໂລກ

ຄຳວ່າ ເພິ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາໃນໂລກໄດ້ ອະທິບາຍວ່າ ຕັນຫານີ້ທີ່ຊື່ວ່າ ວິສັດຕິກາໃນໂລກນີ້ ບຸກຄົນຜູ້ມີສະຕິເພິ່ງຂ້າມ ຄື ເພິ່ງຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍຕັນຫາທີ່ຊື່ວ່າ ວິສັດຕິກາໃນໂລກໄດ້ ລວມຄວາມວ່າ ເພິ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາໃນໂລກໄດ້ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ຂ້າແຕ່ ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຂ້າພຣະອົງພໍໃຈຄວາມສະງົບອັນສູງສຸດນັ້ນ
ທີ່ບຸກຄົນຮູ້ແຈ້ງແລ້ວ ມີສະຕິທ່ຽວໄປຢູ່
ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້

[໓໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ)

ທ່ານຮູ້ແຈ້ງທຳແນວໃດແນວໜຶ່ງ
ເຊິ່ງເປັນທຳຊັ້ນສູງ ຊັ້ນຕ່ຳແລະຊັ້ນກາງ
ທ່ານຮູ້ແຈ້ງທຳນັ້ນວ່າເປັນເຄື່ອງຂ້ອງໃນໂລກແລ້ວ

ຢ່າໄດ້ກໍ່ຕັນຫາເພື່ອພົບນ້ອຍແລະພົບໃຫຍ່ເລີຍ (໗)

ຄຳວ່າ ທ່ານຮູ້ແຈ້ງທຳແນວໃດແນວໜຶ່ງ ອະທິບາຍວ່າ ທ່ານຮູ້ແຈ້ງ ຄື ຮູ້ທົ່ວ ຮູ້ສະເພາະ ແທງຕະຫຼອດທຳແນວໃດແນວໜຶ່ງ ລວມຄວາມວ່າ ທ່ານຮູ້ແຈ້ງທຳແນວໃດແນວໜຶ່ງ

ຄຳວ່າ ໂທຕະກະ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ໗ລ໗ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສີກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ

## ວ່າດ້ວຍທຳຊັ້ນສູງຊັ້ນຕ່ຳແລະຊັ້ນກາງ

ຄຳວ່າ ຊັ້ນສູງ ຊັ້ນຕ່ຳ ແລະຊັ້ນກາງ ອະທິບາຍວ່າ

ອະນາຄົດ ຕັດຮຽກວ່າ ຊັ້ນສູງ ອະດີດ ຕັດຮຽກວ່າ ຊັ້ນຕ່ຳ ປັດຈຸບັນ ຕັດຮຽກວ່າ ຊັ້ນກາງ ເທວະໂລກ ຕັດຮຽກວ່າ ຊັ້ນສູງ ອະບາຍໂລກ ຕັດຮຽກວ່າ ຊັ້ນຕ່ຳ ມະນຸດໂລກ ຕັດຮຽກວ່າ ຊັ້ນກາງ

ອີກໄນໜຶ່ງ ກຸສົນທຳ ຕັດຮຽກວ່າ ຊັ້ນສູງ ອະກຸສົນທຳ ຕັດຮຽກວ່າ ຊັ້ນຕ່ຳ ອັບພະຍາກະຕະທຳ ຕັດຮຽກວ່າ ຊັ້ນກາງ ອະຮູບທາດ ຕັດຮຽກວ່າ ຊັ້ນສູງ ກາມທາດ ຕັດຮຽກວ່າ ຊັ້ນຕ່ຳ ຮູບທາດ ຕັດຮຽກວ່າ ຊັ້ນກາງ ສຸກເວທະນາ ຕັດຮຽກວ່າ ຊັ້ນສູງ ທຸກຂະເວທະນາ ຕັດຮຽກວ່າ ຊັ້ນຕ່ຳ ອະທຸກຂະມະສຸຂະເວທະນາ ຕັດຮຽກວ່າ ຊັ້ນກາງ

ເບື້ອງສູງຈາກຝາຕີນຂຶ້ນໄປ ຕັດຮຽກວ່າ ຊັ້ນສູງ ເບື້ອງຕ່ຳຈາກປາຍຜົມລົງມາ ຕັດ ຮຽກວ່າ ຊັ້ນຕ່ຳ ສູນກາງ ຕັດຮຽກວ່າ ຊັ້ນກາງ ລວມຄວາມວ່າ ຊັ້ນສູງ ຊັ້ນຕ່ຳ ແລະຊັ້ນກາງ

ຄຳວ່າ ທ່ານຮູ້ແຈ້ງທຳນັ້ນວ່າ ເປັນເຄື່ອງຂ້ອງໃນໂລກແລ້ວ ອະທິບາຍວ່າ ທ່ານຮູ້ແລ້ວ ຄື ຮູ້ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວວ່າ ນີ້ເປັນເຄື່ອງຂ້ອງ ນີ້ເປັນເຄື່ອງຕິດພັນ ນີ້ເປັນເຄື່ອງຜູກພັນ ນີ້ເປັນເຄື່ອງພົວພັນ ລວມຄວາມວ່າ ທ່ານຮູ້ແຈ້ງທຳນັ້ນວ່າ ເປັນເຄື່ອງຂ້ອງໃນໂລກແລ້ວ

ຄຳວ່າ ຕັນຫາ ໃນຄຳວ່າ ຢ່າໄດ້ກໍ່ຕັນຫາເພື່ອພົບນ້ອຍພົບໃຫຍ່ເລີຍ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ

ຄຳວ່າ ເພື່ອພົບນ້ອຍພົບໃຫຍ່ເລີຍ ອະທິບາຍວ່າ ຢ່າກໍ່ ຄື ຢ່າໃຫ້ເກີດ ຢ່າໃຫ້ເກີດຂຶ້ນ ຢ່າໃຫ້ບັງເກີດ ຢ່າໃຫ້ບັງເກີດຂຶ້ນ ໄດ້ແກ່ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຕັນຫາ ເພື່ອພົບນ້ອຍພົບໃຫຍ່ ຄື ເພື່ອກຳມະວັດແລະວິປາກະວັດ ເພື່ອກຳມະວັດເປັນ

ເຄື່ອງເກີດໃນກາມະພົບ ເພື່ອວິປາກະວັດເປັນເຄື່ອງເກີດໃນກາມະພົບ ເພື່ອກຳມະວັດເປັນເຄື່ອງເກີດໃນຮູບພົບ ເພື່ອວິປາກະວັດເປັນເຄື່ອງເກີດໃນຮູບພົບ ເພື່ອກຳມະວັດ ເປັນເຄື່ອງເກີດໃນອະຮູບພົບ ເພື່ອວິປາກະວັດເປັນເຄື່ອງເກີດໃນອະຮູບພົບ ເພື່ອພົບຕໍ່ໄປ ເພື່ອຄະຕິຕໍ່ໄປ ເພື່ອການຖືກຳເນີດຕໍ່ໄປ ເພື່ອປະຕິສົນທິຕໍ່ໄປ ເພື່ອການບັງເກີດຂຶ້ນແຫ່ງອັດຕະພາບຕໍ່ໄປ ລວມຄວາມວ່າຢ່າໄດ້ກໍ່ຕັນຫາເພື່ອພົບນ້ອຍພົບໃຫຍ່ເລີຍ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂທຕະກະ)

ທ່ານຮູ້ແຈ້ງທຳແນວໃດແນວໜຶ່ງ
ເຊິ່ງເປັນທຳຊັ້ນສູງ ຊັ້ນຕ່ຳແລະຊັ້ນກາງ
ທ່ານຮູ້ແຈ້ງທຳນັ້ນວ່າເປັນເຄື່ອງຂ້ອງໃນໂລກແລ້ວ
ຢ່າໄດ້ກໍ່ຕັນຫາເພື່ອພົບນ້ອຍພົບໃຫຍ່ເລີຍ

ພ້ອມກັບການຈົບຄາຖາ ฯລฯ ໂທຕະກະມານົບ ฯລฯ ໂດຍປະກາດວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ

**ໂທຕະກະມານະວະປັນຫານິດເທດທີ ໕ ຈົບ**

## ໖. ອຸປະສີວະມານະວະປັນຫານິດເທດ

### ວ່າດ້ວຍປັນຫາຂອງອຸປະສີວະມານົບ

[໓໗] (ທ່ານອຸປະສີວະທູນຖາມ ດັ່ງນີ້)

ຂ້າແຕ່ ພຣະອົງຜູ້ສັກກະ ຂ້າພຣະອົງຜູ້ດຽວ
ບໍ່ໄດ້ອາໄສ (ຜູ້ໃດ ຫຼືສິ່ງໃດ ໆ)
ຈຶ່ງບໍ່ສາມາດຂ້າມຫ້ວງກິເລດອັນຍິ່ງໃຫຍ່ໄດ້
ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ
ຂໍພຣະອົງໂຜດຕັດບອກອາລົມ
ທີ່ຂ້າພຣະອົງໄດ້ອາໄສແລ້ວ ເພິ່ງຂ້າມຫ້ວງກິເລດນີ້ໄດ້ (໑)

ຄຳວ່າ ຜູ້ດຽວ ໃນຄຳວ່າ ຂ້າແຕ່ພຣະອົງຜູ້ສັກກະ ຂ້າພຣະອົງຜູ້ດຽວ ฯລฯ ຫ້ວງກິເລດອັນຍິ່ງໃຫຍ່ໄດ້ ອະທິບາຍວ່າ ຂ້າພຣະອົງອາໄສບຸກຄົນຫຼືທຳໃດຂ້າມ ຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍຫ້ວງກິເລດໃຫຍ່ ຄື ກາໂມຄະ ພະໂວຄະ ທິດໂຖຄະ ອະວິດໂຊຄະ ຂ້າພຣະອົງບໍ່ມີບຸກຄົນ ຫຼື ທຳນັ້ນເປັນເພື່ອນ

## ວ່າດ້ວຍພຣະຜູ້ມີພຣະພາກເຈົ້າຊື່ວ່າສັກກະ

ຄຳວ່າ ຂ້າແຕ່ພຣະອົງຜູ້ສັກກະ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຜູ້ສັກກະສະເດັດອອກບວດຈາກສາກະຍະຕະກູນ ຈຶ່ງຊື່ວ່າຜູ້ສັກກະ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງມັ່ງຄັ່ງ ຊົງມີຊັບຫຼາຍ ມີຊັບ ຈຶ່ງຊື່ວ່າ ຜູ້ສັກກະ

ພຣະອົງຊົງມີຊັບເຫຼົ່ານີ້ ຄື ຊັບຄືສັດທາ ຊັບຄືສີນ ຊັບຄືຫິຣິ ຊັບຄືໂອດຕັບປະ ຊັບຄືສຸຕະ ຊັບຄືຈາຄະ ຊັບຄືປັນຍາ ຊັບຄືສະຕິປັດຖານ ຊັບຄືສຳມັບປະທານ ຊັບຄືອິດທິບາດ ຊັບຄືອິນຊີ ຊັບຄືພະລະ ຊັບຄືໂພດຊົງ ຊັບຄືມັກ ຊັບຄືຜົນ ຊັບຄືນິບພານ

ພຣະຜູ້ມີພຣະພາກເຈົ້າຊົງມັ່ງຄັ່ງ ມີຊັບຫຼາຍ ຊົງມີຊັບດ້ວຍຊັບທີ່ເປັນຣັດຕະນະຫຼາຍຢ່າງເຫຼົ່ານີ້ ຈຶ່ງຊື່ວ່າ ຜູ້ສັກກະ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງສາມາດ ຄື ຊົງອົງອາດ ອາດຫານ ມີຄວາມສາມາດ ກ້າ ກ້າຫານ ກ້າວໜ້າ ບໍ່ຢ້ານ ບໍ່ຫວາດສຽວ ບໍ່ສະດຸ້ງ ບໍ່ໜີ ຊົງລະໄພແລະຄວາມຢ້ານກົວໄດ້ແລ້ວ ໝົດຄວາມຂົນພອງສະຫຍອງເກົ້າ ຈຶ່ງຊື່ວ່າຜູ້ສັກກະ ລວມຄວາມວ່າ ຂ້າແຕ່ພຣະອົງຜູ້ສັກກະ ຂ້າພຣະອົງຜູ້ດຽວ ຯລຯ ຫ້ວງກິເລດອັນຍິ່ງໃຫຍ່ໄດ້

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານອຸປະສີວະທູນຖາມ ດັ່ງນີ້ ເປັນບົດສົນທິ ຯລຯ

ຄຳວ່າ ທ່ານ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ

ຄຳວ່າ ອຸປະສີວະ ເປັນຊື່ຂອງພາມນັ້ນ ຯລຯ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານອຸປະສີວະທູນຖາມ ດັ່ງນີ້

ຄຳວ່າ ບໍ່ໄດ້ອາໄສ ໃນຄຳວ່າ ບໍ່ໄດ້ອາໄສ (ຜູ້ໃດຫຼືສິ່ງໃດ ໆ) ຈຶ່ງບໍ່ສາມາດຂ້າມ ໄດ້ແກ່ ບໍ່ໄດ້ອາໄສບຸກຄົນ ຫຼື ທຳເລີຍ

ຄຳວ່າ ຈຶ່ງບໍ່ສາມາດ ໄດ້ແກ່ ບໍ່ກ້າ ບໍ່ອາດ ເປັນຜູ້ບໍ່ສາມາດ

ຄຳວ່າ ຂ້າມ ໄດ້ແກ່ ຂ້າມ ຄື ຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍຫ້ວງກິເລດໃຫຍ່ຄືກາໂມຄະ ພະໂວຄະ ທິດໂຖຄະ ອະວິດໄຊຄະ ລວມຄວາມວ່າ ບໍ່ໄດ້ອາໄສ (ຜູ້ໃດຫຼືສິ່ງໃດ ໆ) ຈຶ່ງບໍ່ສາມາດຂ້າມ

ຄຳວ່າ ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ ຂໍພຣະອົງໂຜດຕັດບອກອາລົມ ອະທິບາຍວ່າ ຂໍພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍປະກາດ ອາລົມເຄື່ອງຢຶດໜ່ຽວ ທີ່ອາໄສ ທີ່ເຂົ້າໄປອາໄສ

ຄຳວ່າ ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ ອະທິບາຍວ່າ ພຣະສັບພັນຍຸຕະຍານ ຮຽກວ່າສະມັນຕະຈັກຂຸ ພຣະຜູ້ມີພຣະພາກເຈົ້າຊົງປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍພຣະສັບພັນຍຸຕະຍານນັ້ນ

(ສົມຈິງດັ່ງຄາຖາປະພັນວ່າ)

ສິ່ງໃດ ໆ ໃນໄຕຣໂລກທາດນີ້
ພຣະປັນຍາຈັກຂຸຂອງພຣະຕະຖາຄົດນັ້ນບໍ່ເຫັນ ບໍ່ມີເລີຍ
ອັນໜຶ່ງ ທຳມະຊາດອັນໃດ ໆ ທີ່ຄວນຮູ້
ພຣະພຸດທະຍານບໍ່ຮູ້ແຈ້ງ ກໍບໍ່ມີ
ທຳມະຊາດທີ່ຄວນແນະນຳໃດມີຢູ່
ພຣະຕະຖາຄົດໄດ້ຊົງຮູ້ທຳມະຊາດທີ່ຄວນແນະນຳນັ້ນທັງໝົດ
ຍ້ອນເຫດນັ້ນ ພຣະຕະຖາຄົດຈຶ່ງຊື່ວ່າ ຜູ້ມີສະມັນຕະຈັກຂຸ

ລວມຄວາມວ່າ ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ ຂໍພຣະອົງໂຜດຕັດບອກອາລົມ

ຄຳວ່າ ທີ່ຂ້າພຣະອົງໄດ້ອາໄສແລ້ວ ໃນຄຳວ່າ ທີ່ຂ້າພຣະອົງໄດ້ອາໄສແລ້ວເພິ່ງຂ້າມຫ້ວງກິເລດນີ້ໄດ້ ໄດ້ແກ່ ບຸກຄົນ ຫຼື ທຳ ທີ່ຂ້າພຣະອົງໄດ້ອາໄສແລ້ວ

ຄຳວ່າ ເພິ່ງຂ້າມຫ້ວງກິເລດນີ້ໄດ້ ອະທິບາຍວ່າ ເພິ່ງຂ້າມ ຄື ເພິ່ງຂ້າມໄປ ຂ້າມພົ້ນກ້າວລ່ວງ ລ່ວງເລີຍຫ້ວງກິເລດໃຫຍ່ ຄື ກາໂມຄະ ພະໂວຄະ ທິດໂຖຄະ ອະວິດໂຊຄະ ລວມຄວາມວ່າ ທີ່ຂ້າພຣະອົງໄດ້ອາໄສແລ້ວ ເພິ່ງຂ້າມຫ້ວງກິເລດນີ້ໄດ້ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

(ທ່ານອຸປະສີວະທູນຖາມ ດັ່ງນີ້)

ຂ້າແຕ່ ພຣະອົງຜູ້ສັກກະ ຂ້າພຣະອົງຜູ້ດຽວ
ບໍ່ໄດ້ອາໄສ (ຜູ້ໃດ ຫຼືສິ່ງໃດ ໆ)
ຈຶ່ງບໍ່ສາມາດຂ້າມຫ້ວງກິເລດອັນຍິ່ງໃຫຍ່ໄດ້
ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ
ຂໍພຣະອົງໂຜດຕັດບອກອາລົມ
ທີ່ຂ້າພຣະອົງໄດ້ອາໄສແລ້ວ ເພິ່ງຂ້າມຫ້ວງກິເລດນີ້ໄດ້

[໓໙] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ)

ທ່ານຈົ່ງມີສະຕິ ເພ່ງພິຈາລະນາອາກິນຈັນຍາຍະຕະນະສະມາບັດ
ຍຶດເອົາເປັນອາລົມວ່າ ບໍ່ມີອັນໃດດັ່ງນີ້ແລ້ວ
ກໍຈະຂ້າມຫ້ວງກິເລດໄດ້ ທ່ານຈົ່ງລະກາມທັງຫຼາຍ
ເປັນຜູ້ງົດເວັ້ນຈາກຄວາມສົງໄສທັງຫຼາຍ
ພິຈາລະນາກວາມສິ້ນຕັນຫາ ທັງຄືນແລະທັງວັນ (໔)

ຄຳວ່າ ທ່ານຈົ່ງມີສະຕິ ເພ່ງພິຈາລະນາອາກິນຈັນຍາຍະຕະນະສະມາບັດ ອະທິບາຍວ່າ ພາມນັ້ນ ໄດ້ອາກິນຈັນຍາຍະຕະນະສະມາບັດຢູ່ໂດຍປົກກະຕິ ບໍ່ຮູ້ບ່ອນອາໄສວ່າ ສະມາບັດນີ້ ເປັນບ່ອນອາໄສຂອງເຮົາ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດບອກບ່ອນອາໄສ ແລະທາງອອກທີ່ສູງ ຂຶ້ນໄປແກ່ພາມນັ້ນ ພຣະອົງຕັດບອກວ່າ ທ່ານຈົ່ງມີສະຕິເຂົ້າອາກິນຈັນຍາຍະຕະນະສະມາບັດ ອອກຈາກອາກິນຈັນຍາຍະຕະນະສະມາບັດນັ້ນແລ້ວ ເພ່ງພິຈາລະນາ ຄື ແນມເຫັນ ກວດເບິ່ງ ເພ່ງພິນິດ ພິຈາລະນາຈິດ ແລະເຈຕະສິກທຳທີ່ເກີດໃນສະມາບັດນັ້ນ ໂດຍຄວາມເປັນຂອງບໍ່ທ່ຽງ ຯລຯ ເປັນທຸກ ຯລຯ ເປັນໂຣກ ຯລຯ ເປັນເໝືອນຫົວຝີ ຯລຯ ເປັນເໝືອນລູກສອນ ຯລຯ ເປັນຂອງລຳບາກ ຯລຯ ເປັນອາພາດ ຯລຯ ເປັນຢ່າງອື່ນ (ບັງຄັບບໍ່ໄດ້) ຯລຯ ເປັນຂອງຊຸດ ໂຊມ ຯລຯ ເປັນສະໜຽດ ຯລຯ ເປັນອຸປັດທະວະ ຯລຯ ເປັນໄພ ຯລຯ ເປັນອຸປະສັກ ຯລຯ ເປັນຂອງຫວັ່ນໄຫວ ຯລຯ ເປັນຂອງຜຸພັງ ຯລຯ ເປັນຂອງບໍ່ຍັ່ງຍືນ ຯລຯ ເປັນຂອງບໍ່ມີບ່ອນ ຕ້ານທານ ຯລຯ ເປັນຂອງບໍ່ມີບ່ອນຫຼົບຫຼີກ ຯລຯ ເປັນຂອງບໍ່ມີບ່ອນເພິ່ງ ຯລຯ ເປັນຂອງບໍ່ມີ ບ່ອນອາໄສ ຯລຯ ເປັນຂອງວ່າງ ຯລຯ ເປັນຂອງເປົ່າ ຯລຯ ເປັນຂອງສູນ ຯລຯ ເປັນອະນັດ ຕາ ຯລຯ ເປັນຂອງມີໂທດ ຯລຯ ເປັນຂອງຜັນປ່ຽນໄປເປັນທຳມະດາ ຯລຯ ເປັນຂອງບໍ່ມີ ແກ່ນສານ ຯລຯ ເປັນເຫດແຫ່ງຄວາມລຳບາກ ຯລຯ ເປັນຄວາມຈະເລີນ ຯລຯ ເປັນຂອງ ປາສະຈາກຄວາມຈະເລີນ ຯລຯ ເປັນຂອງມີອາສະວະ ຯລຯ ເປັນເໝືອນເພດຊະຄາດ ຯລຯ ເປັນຂອງທີ່ຖືກເຫດປັດໄຈປຸງແຕ່ງ ຯລຯ ເປັນເຫຍື່ອແຫ່ງມານ ຯລຯ ມີຊາດເປັນທຳມະດາ ຯລຯ ມີຊະຣາເປັນທຳມະດາ ຯລຯ ມີພະຍາທິເປັນທຳມະດາ ຯລຯ ມີມໍຣະນະເປັນທຳມະດາ ຯລຯ ມີໂສກະປະຣິເທວະທຸກຂະໂທມະນັດອຸປາຍາດເປັນທຳມະດາ ຯລຯ ເປັນເຫດເກີດທຸກ ຯລຯ ຕັ້ງຢູ່ບໍ່ໄດ້ ຯລຯ ຫາຄວາມແຊ່ມຊື່ນບໍ່ໄດ້ ຯລຯ ເປັນໂທດ ຯລຯ ເປັນຂອງທີ່ຕ້ອງສະ ລັດອອກໄປ

ຄຳວ່າ ມີສະຕິ ອະທິບາຍວ່າ ສະຕິ ຄວາມຕາມຣະລຶກເຖິງ ຄວາມຣະລຶກໄດ້ສະເພາະ ຯລຯ ສຳມາສະຕິ[១] ນີ້ຕັດຮຽກວ່າ ມີສະຕິ ພາມນັ້ນຜູ້ປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນ ໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍສະຕິນີ້ ພາມນັ້ນພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ມີສະຕິ ລວມຄວາມວ່າ ທ່ານຈົ່ງມີສະຕິ ເພ່ງພິຈາລະນາອາກິນຈັນຍາຍະຕະນະສະມາບັດ

ຄຳວ່າ ອຸປະສີວະ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ ເປັນຄຳທີ່ ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະ ຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ

ຄຳວ່າ ຍຶດເອົາເປັນອາລົມວ່າ ບໍ່ມີອັນໃດດັ່ງນີ້ແລ້ວ ກໍຈະຂ້າມຫ້ວງກິເລດໄດ້ ອະທິບາຍ ວ່າ ອາກິນຈັນຍາຍະຕະນະສະມາບັດ ຍ້ອນອັດຖະວ່າ ອັນໃດໜ້ອຍໜຶ່ງຍ່ອມບໍ່ມີ ອາກິນຈັນຍາ

ຍະຕະນະສະມາບັດ ຍ້ອນອັດຖະວ່າ ອັນໃດໜ້ອຍໜຶ່ງຍ່ອມບໍ່ມີ ຍ້ອນເຫດໃດ ພາມນັ້ນ ມີສະຕິ ເຂົ້າວິນຍານັນຈາຍະຕະນະສະມາບັດ ອອກຈາກສະມາບັດນັ້ນແລ້ວ ບໍ່ໃຫ້ວິນຍານນັ້ນມີ ບໍ່ໃຫ້ມີ ໂດຍປະການຕ່າງ ໆ ໃຫ້ອັນຕະຣະທານຫາຍໄປ ຍ່ອມເຫັນວ່າ ອັນໃດ ໜ້ອຍໜຶ່ງຍ່ອມບໍ່ມີ ຍ້ອນເຫດນັ້ນ ທ່ານອາໄສ ຄື ເຂົ້າໄປອາໄສອາກິນຈັນຍາຍະຕະນະສະມາບັດທີ່ມີຄວາມໝາຍວ່າ ອັນໃດໜ້ອຍໜຶ່ງຍ່ອມບໍ່ມີ ເຮັດໃຫ້ເປັນເຄື່ອງໜ່ຽວຮັ້ງ

ຈຶ່ງຂ້າມ ຄື ຈຶ່ງຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍຫ້ວງກິເລດ ຄື ກາໂມຄະ ພະໂວຄະ ທິດໂຖຄະ ອະວິດໂຊຄະໃຫ້ໄດ້ ລວມຄວາມວ່າ ຢຶດເອົາເປັນອາລົມວ່າ ບໍ່ມີອັນໃດດັ່ງນີ້ແລ້ວ ກໍຈະຂ້າມຫ້ວງກິເລດໄດ້

ຄຳວ່າ ທ່ານຈຶ່ງລະການທັງຫຼາຍ ເປັນຜູ້ງົດເວັ້ນຈາກຄວາມສົງໄສທັງຫຼາຍ ອະທິບາຍວ່າ

ຄຳວ່າ ການ ໄດ້ແກ່ ການ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸການ (໒) ກິເລດການ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸການ ຯລຯ ເຫຼົ່ານີ້ຮຽກວ່າ ກິເລດການ

ຄຳວ່າ ລະການທັງຫຼາຍ ອະທິບາຍວ່າ ກຳນົດຮູ້ວັດຖຸການ ລະ ຄື ລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງກິເລດການ ລວມຄວາມວ່າ ລະການທັງຫຼາຍ

ຄຳວ່າ ເປັນຜູ້ງົດເວັ້ນຈາກຄວາມສົງໄສທັງຫຼາຍ ອະທິບາຍວ່າ ວິຈິກິດສາຕັດຮຽກວ່າ ຄວາມສົງໄສ ໄດ້ແກ່ ຄວາມສົງໄສໃນທຸກ ຯລຯ ຄວາມຫວາດຫວັ່ນແຫ່ງຈິດ ຄວາມຕິດຂັດໃນໃຈເຫັນປານນີ້ ບຸກຄົນງົດ ງົດເວັ້ນ ຄືເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງ ມີໃຈເປັນອິດສະຫຼະຈາກຄວາມສົງໄສຢູ່ ລວມຄວາມວ່າ ເປັນຜູ້ງົດເວັ້ນຈາກຄວາມສົງໄສທັງຫຼາຍ ແນວນີ້ແດ່

ອີກໄນໜຶ່ງ ບຸກຄົນງົດ ງົດເວັ້ນ ຄືເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງ ມີໃຈເປັນອິດສະຫຼະຈາກເດຍຣັດສານກະຖາ ໓໒ ປະການຢູ່ ລວມຄວາມວ່າ ເປັນຜູ້ງົດເວັ້ນຈາກຄວາມສົງໄສທັງຫຼາຍ ແນວນີ້ແດ່ ລວມຄວາມວ່າ ທ່ານຈຶ່ງລະການທັງຫຼາຍ ເປັນຜູ້ງົດເວັ້ນຈາກຄວາມສົງໄສທັງຫຼາຍ

ຄຳວ່າ ພິຈາລະນາຄວາມສິ້ນຕັນຫາ ທັງຄືນທັງວັນ ອະທິບາຍວ່າ

ຄຳວ່າ ຕັນຫາ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ

ຄຳວ່າ ທັງຄືນ ໄດ້ແກ່ ຕະຫຼອດຄືນ

ຄຳວ່າ ທັງວັນ ໄດ້ແກ່ ຕະຫຼອດວັນ ອະທິບາຍວ່າ ທ່ານຈຶ່ງເຫັນ ເພ່ງພິຈາລະນາ ຄື ແນມເຫັນ ເບິ່ງເຫັນ ເພ່ງພິນິດ ພິຈາລະນາເຊິ່ງຄວາມສິ້ນຕັນຫາ ຄື ຄວາມສິ້ນຣາຄະ ສິ້ນໂທສະ ສິ້ນໂມຫະ ສິ້ນຄະຕິ ສິ້ນການຖືກຳເນີດ ສິ້ນປະຕິສົນທິ ສິ້ນພົບ ສິ້ນສົງສານ ສິ້ນວັດຕະ

ຕະຫຼອດກາງຄືນ ແລະກາງເວັນເທົ່ານັ້ນ ລວມຄວາມວ່າ ພິຈາລະນາຄວາມສິ້ນຕັນຫາ ທັງຄືນທັງວັນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ)

ທ່ານຈົ່ງມີສະຕິ ເພ່ງພິຈາລະນາອາກິນຈັນຍາຍະຕະນະສະມາບັດ
ຍຶດເອົາເປັນອາລົມວ່າ ບໍ່ມີອັນໃດດັ່ງນີ້ແລ້ວ
ກໍຈະຂ້າມຫ້ວງກິເລດໄດ້ ທ່ານຈົ່ງລະກາມທັງຫຼາຍ
ເປັນຜູ້ງົດເວັ້ນຈາກຄວາມສົງໄສທັງຫຼາຍ
ພິຈາລະນາກວາມສິ້ນຕັນຫາ ທັງຄືນທັງວັນ

[໔໐] (ທ່ານອຸປະສີວະທູນຖາມ ດັ່ງນີ້)

ບຸກຄົນໃດຄາຍຣາຄະໃນກາມທັງປວງ
ລະສະມາບັດອື່ນ ອາໄສແຕ່ອາກິນຈັນຍາຍະຕະນະສະມາບັດ
ນ້ອມໃຈໄປໃນສັນຍາວິໂມກຊັ້ນສູງ
ບຸກຄົນນັ້ນບໍ່ຫວັ່ນໄຫວ ດຳຣົງຢູ່ໃນພົມມະໂລກ
ຊັ້ນອາກິນຈັນຍາຍະຕະນະນັ້ນໄດ້ (໘)

ຄຳວ່າ ທັງປວງ ໃນຄຳວ່າ ບຸກຄົນໃດຄາຍຣາຄະໃນກາມທັງປວງໄດ້ແກ່ທຸກສິ່ງ ໂດຍອາການທັງໝົດ ທຸກຢ່າງ ບໍ່ເຫຼືອ ບໍ່ມີສ່ວນເຫຼືອໂດຍປະການທັງປວງ ຄຳວ່າ ທັງປວງນີ້ເປັນຄຳກ່າວລວມ ໆ ໄວ້ທັງໝົດ

ຄຳວ່າ ໃນກາມ ອະທິບາຍວ່າ

ຄຳວ່າ ກາມ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ຯລຯ ເຫຼົ່ານີ້ຮຽກວ່າ ກິເລດກາມ

ຄຳວ່າ ບຸຄົກໃດຄາຍຣາຄະໃນກາມທັງປວງ ອະທິບາຍວ່າ ບຸກຄົນໃດເປັນຜູ້ຄາຍຣາຄະແລ້ວ ຄື ປາສະຈາກຣາຄະແລ້ວ ສະລະຣາຄະແລ້ວ ຄາຍຣາຄະແລ້ວ ປ່ອຍຣາຄະແລ້ວ ລະຣາຄະແລ້ວ ສະລັດຖິ້ມຣາຄະໃນກາມທັງຫຼາຍແລ້ວ ໂດຍການຂົ່ມໄວ້ ລວມຄວາມວ່າ ບຸກຄົນໃດຄາຍຣາຄະໃນກາມທັງປວງ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານອຸປະສີວະທູນຖາມ ດັ່ງນີ້ ເປັນບົດສົນທິ ຯລຯ

ຄຳວ່າ ທ່ານ ເປັນຄຳກ່າວດ້ວຍຄວາມຮັກ ຯລຯ

ຄຳວ່າ ອຸປະສີວະ ເປັນຊື່ຂອງພາມນັ້ນ ຯລຯ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານອຸປະສີວະທູນຖາມ ດັ່ງນີ້

ຄຳວ່າ ລະສະມາບັດອື່ນ ອາໄສແຕ່ອາກິນຈັນຍາຍະຕະນະສະມາບັດ ອະທິບາຍ ວ່າ ລະ ຄື ສະລະ ເສຍສະລະ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນສະມາບັດ ໖ ເບື້ອງຕ່ຳ ໄດ້ແກ່ ອາໄສ ຕິດ ຕິດແໜ້ນ ແນບແໜ້ນ ຕິດໃຈ ນ້ອມໃຈເຊື່ອອາກິນຈັນຍາຍະຕະນະສະມາບັດ ລວມຄວາມ ວ່າ ລະສະມາບັດອື່ນ ອາໄສແຕ່ອາກິນຈັນຍາຍະຕະນະສະມາບັດ

ຄຳວ່າ ນ້ອມໃຈໄປໃນສັນຍາວິໂມກຊັ້ນສູງ ອະທິບາຍວ່າ ສັນຍາສະມາບັດ ໗ ຕັດຮຽກ ວ່າ ສັນຍາວິໂມກ

## ວ່າດ້ວຍອາກິນຈັນຍາຍະຕະນະສະມາບັດເປັນວິໂມກອັນເລີດ

ບັນດາສັນຍາສະມາບັດເຫຼົ່ານັ້ນ ອາກິນຈັນຍາຍະຕະນະສະມາບັດ ເປັນວິໂມກອັນເລີດ ປະເສີດ ວິເສດສຸດ ຊັ້ນແນວໜ້າ ສູງສຸດ ແລະປະເສີດ ຜູ້ນ້ອມໃຈໄປໃນສັນຍາວິໂມກຊັ້ນສູງ ເລີດ ຄື ປະເສີດ ວິເສດສຸດ ຊັ້ນແນວໜ້າ ສູງສຸດ ປະເສີດ ດ້ວຍອະທິມຸດຕິວິໂມກ ໄດ້ແກ່ ນ້ອມໃຈເຊື່ອໃນສັນຍາວິໂມກນັ້ນ ນ້ອມໃຈໄປສູ່ສັນຍາວິໂມກນັ້ນ ທ່ຽວໄປດ້ວຍສັນຍາວິໂມກນັ້ນ ຫຼາຍໄປດ້ວຍສັນຍາວິໂມກນັ້ນ ໜັກໄປໃນສັນຍາວິໂມກນັ້ນ ເອນໄປໃນສັນຍາວິໂມກນັ້ນ ໂອນ ໄປໃນສັນຍາວິໂມກນັ້ນ ໂນ້ມໄປໃນສັນຍາວິໂມກນັ້ນ ມີສັນຍາວິໂມກນັ້ນເປັນໃຫຍ່ ລວມຄວາມ ວ່າ ນ້ອມໃຈໄປໃນສັນຍາວິໂມກຊັ້ນສູງ

ຄຳວ່າ ດຳຣົງຢູ່ ໗ລ໗ ໄດ້ ຫຼື ໃນຄຳວ່າ ບຸກຄົນນັ້ນບໍ່ຫວັ່ນໄຫວ ດຳຣົງຢູ່ໃນພົມມະ ໂລກຊັ້ນອາກິນຈັນຍາຍະຕະນະນັ້ນໄດ້ ຫຼື ເປັນຄຳຖາມດ້ວຍຄວາມສົງໄສ ເປັນຄຳຖາມດ້ວຍ ຄວາມຂ້ອງໃຈ ເປັນຄຳຖາມ ໘ ແງ່ ເປັນຄຳຖາມມີແງ່ມຸມຫຼາກຫຼາຍວ່າ ຢ່າງນີ້ແມ່ນບໍ ບໍ່ແມ່ນ ແມ່ນບໍ ເປັນອັນໃດນໍ ເປັນແນວໃດນໍ ລວມຄວາມວ່າ ດຳຣົງຢູ່ ໗ລ໗ ໄດ້

ຄຳວ່າ ໃນນັ້ນ ໄດ້ແກ່ ໃນອາກິນຈັນຍາຍະຕະນະສະມາບັດ

ຄຳວ່າ ບໍ່ຫວັ່ນໄຫວ ອະທິບາຍວ່າ ບໍ່ຫວັ່ນໄຫວ ຄື ບໍ່ພັ່ນພຶງ ບໍ່ຫຼົບໜີ ບໍ່ອັນຕະຣະທານ ຫາຍໄປ ບໍ່ເສື່ອມໄປ ອີກໄນໜຶ່ງ ບໍ່ກຳໜັດ ບໍ່ຂັດເຄືອງ ບໍ່ລຸ້ມຫຼົງ ບໍ່ເສົ້າໝອງ ລວມຄວາມວ່າ ບຸກຄົນນັ້ນບໍ່ຫວັ່ນໄຫວ ດຳຣົງຢູ່ໃນພົມມະໂລກຊັ້ນອາກິນຈັນຍາຍະຕະນະນັ້ນໄດ້ບໍ ດ້ວຍເຫດ ນັ້ນ ພາມນັ້ນ ຈຶ່ງຂາບທູນວ່າ

(ທ່ານອຸປະສີວະທູນຖາມ ດັ່ງນີ້)

ບຸກຄົນໃດຄາຍຣາຄະໃນກາມທັງປວງ
ລະສະມາບັດອື່ນ ອາໄສແຕ່ອາກິນຈັນຍາຍະຕະນະສະມາບັດ
ນ້ອມໃຈໄປໃນສັນຍາວິໂມກຊັ້ນສູງ
ບຸກຄົນນັ້ນບໍ່ຫວັ່ນໄຫວ ດຳຣົງຢູ່ໃນພົມມະໂລກ
ຊັ້ນອາກິນຈັນຍາຍະຕະນະນັ້ນໄດ້

[໔໑] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ)

ບຸກຄົນໃດຄາຍຣາຄະໃນກາມທັງປວງ
ລະສະມາບັດອື່ນ ອາໄສແຕ່ອາກິນຈັນຍາຍະຕະນະສະມາບັດ
ນ້ອມໃຈໄປໃນສັນຍາວິໂມກຊັ້ນສູງ
ບຸກຄົນນັ້ນບໍ່ຫວັ່ນໄຫວ ດຳຣົງຢູ່ໃນພົມມະໂລກ
ຊັ້ນອາກິນຈັນຍາຍະຕະນະນັ້ນໄດ້ (໔)

ຄຳວ່າ ທັງປວງ ໃນຄຳວ່າ ບຸຄົກໃດຄາຍຣາຄະໃນກາມທັງປວງ ໄດ້ແກ່ ທຸກສິ່ງ ໂດຍອາການທັງປວງ ທຸກຢ່າງໂດຍທຸກປະການ ບໍ່ເຫຼືອ ບໍ່ມີສ່ວນເຫຼືອໂດຍປະການທັງປວງ ຄຳວ່າ ທັງປວງນີ້ເປັນຄຳກ່າວລວມ ໆ ໄວ້ທັງໝົດ

ຄຳວ່າ ໃນກາມ ອະທິບາຍວ່າ

ຄຳວ່າ ກາມ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ຯລຯ ເຫຼົ່ານີ້ຮຽກວ່າ ກິເລດກາມ

ຄຳວ່າ ບຸຄົກໃດຄາຍຣາຄະໃນກາມທັງປວງ ອະທິບາຍວ່າ ບຸກຄົນໃດເປັນຜູ້ຄາຍຣາຄະແລ້ວ ຄື ປາສະຈາກຣາຄະແລ້ວ ສະລະຣາຄະແລ້ວ ຄາຍຣາຄະແລ້ວ ປ່ອຍຣາຄະແລ້ວ ລະຣາຄະແລ້ວ ສະລັດຖິ້ມຣາຄະແລ້ວໃນກາມທັງປວງ ໂດຍການຂົ່ມໄວ້ ລວມຄວາມວ່າ ບຸກຄົນໃດຄາຍຣາຄະໃນກາມທັງປວງ

ຄຳວ່າ ອຸປະສີວະ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ

ຄຳວ່າ ລະສະມາບັດອື່ນ ອາໄສແຕ່ອາກິນຈັນຍາຍະຕະນະສະມາບັດ ອະທິບາຍວ່າ ລະ ຄື ສະລະ ເສຍສະລະ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນສະມາບັດ ໖ ເບື້ອງຕໍ່າ ໄດ້ແກ່ ອາໄສ ຕິດ ຕິດແໜ້ນ ແນບແໜ້ນ ຕິດໃຈ ນ້ອມໃຈເຊື່ອອາກິນຈັນຍາຍະຕະນະສະມາບັດ ລວມຄວາມວ່າ ລະສະມາບັດອື່ນ ອາໄສແຕ່ອາກິນຈັນຍາຍະຕະນະສະມາບັດ

ຄຳວ່າ ນ້ອມໃຈໄປໃນສັນຍາວິໂມກຊັ້ນສູງ ອະທິບາຍວ່າ ສັນຍາສະມາບັດ ໆ ຕັດຮຽກວ່າ ສັນຍາວິໂມກ

ໃນບັນດາສັນຍາສະມາບັດເຫຼົ່ານັ້ນ ອາກິນຈັນຍາຍະຕະນະສະມາບັດ ເປັນວິໂມກອັນເລີດ ປະເສີດ ວິເສດສຸດ ຊັ້ນແນວໜ້າ ສູງສຸດ ແລະປະເສີດ ຜູ້ນ້ອມໃຈໄປໃນສັນຍາວິໂມກຊັ້ນສູງ ຄື ເລີດ ປະເສີດ ວິເສດສຸດ ຊັ້ນແນວໜ້າ ສູງສຸດ ປະເສີດ ດ້ວຍອະທິມຸດຕິວິໂມກ ໄດ້

ແກ່ ນ້ອມໃຈເຊື່ອໃນສັນຍາວິໂມກນັ້ນ ນ້ອມໃຈໄປສູ່ສັນຍາວິໂມກນັ້ນ ທ່ຽວໄປດ້ວຍສັນຍາວິໂມກນັ້ນ ຫຼາຍໄປດ້ວຍສັນຍາວິໂມກນັ້ນ ໜັກໄປໃນສັນຍາວິໂມກນັ້ນ ເອນໄປໃນສັນຍາວິໂມກນັ້ນ ໂອນໄປໃນສັນຍາວິໂມກນັ້ນ ໂນ້ມໄປໃນສັນຍາວິໂມກນັ້ນ ມີສັນຍາວິໂມກນັ້ນເປັນໃຫຍ່ ລວມຄວາມວ່າ ນ້ອມໃຈໄປໃນສັນຍາວິໂມກຊັ້ນສູງ

ຄຳວ່າ ດຳຣົງຢູ່ ໃນຄຳວ່າ ບຸກຄົນນັ້ນບໍ່ຫວັ່ນໄຫວ ດຳຣົງຢູ່ໃນພົມມະໂລກຊັ້ນອາກິນຈັນຍາຍະຕະນະນັ້ນໄດ້ ໄດ້ແກ່ ເພິ່ງດຳຣົງຢູ່ໄດ້ ໖໐,໐໐໐ ກັບ

ຄຳວ່າ ໃນນັ້ນ ໄດ້ແກ່ ໃນອາກິນຈັນຍາຍະຕະນະສະມາບັດ

ຄຳວ່າ ບໍ່ຫວັ່ນໄຫວ ອະທິບາຍວ່າ ບໍ່ຫວັ່ນໄຫວ ຄື ບໍ່ພັ່ນພຶງ ບໍ່ຫຼົບໜີ ບໍ່ອັນຕະຣະທານຫາຍໄປ ບໍ່ເສື່ອມໄປ

ອີກໄນໜຶ່ງ ບໍ່ກຳໜັດ ບໍ່ຂັດເຄືອງ ບໍ່ລຸ້ມຫຼົງ ບໍ່ເສື່ອມໄປ ລວມຄວາມວ່າ ບຸກຄົນນັ້ນບໍ່ຫວັ່ນໄຫວ ດຳຣົງຢູ່ໃນພົມມະໂລກຊັ້ນອາກິນຈັນຍາຍະຕະນະນັ້ນໄດ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ)

ບຸກຄົນໃດຄາຍຣາຄະໃນກາມທັງປວງ
ລະສະມາບັດອື່ນ ອາໄສແຕ່ອາກິນຈັນຍາຍະຕະນະສະມາບັດ
ນ້ອມໃຈໄປໃນສັນຍາວິໂມກຊັ້ນສູງ
ບຸກຄົນນັ້ນບໍ່ຫວັ່ນໄຫວ ດຳຣົງຢູ່ໃນພົມມະໂລກ
ຊັ້ນອາກິນຈັນຍາຍະຕະນະນັ້ນໄດ້

[໔໘] (ທ່ານອຸປະສີວະທູນຖາມວ່າ)

ຂ້າແຕ່ ພຣະອົງຜູ້ມີສະມັນຕະຈັກຂຸ
ຖ້າບຸກຄົນນັ້ນບໍ່ຫວັ່ນໄຫວດຳຣົງຢູ່ໃນພົມມະໂລກນັ້ນໄດ້ຫຼາຍປີແລ້ວ
ບຸກຄົນນັ້ນເປັນຜູ້ຫຼຸດພົ້ນແລ້ວ
ມີຄວາມສະງົບເຢັນຢູ່ໃນພົມມະໂລກນັ້ນ ໆ ແລ
ຫຼືວ່າວິນຍານຂອງບຸກຄົນນັ້ນຈະເພິ່ງຈຸຕິອີກ (໕)

ຄຳວ່າ ຖ້າບຸກຄົນຜູ້ນັ້ນ ฯลฯ ດຳຣົງຢູ່ ໃນຄຳວ່າ ຖ້າບຸຄົກນັ້ນບໍ່ຫວັ່ນໄຫວ ດຳຣົງຢູ່ໃນພົມມະໂລກນັ້ນຫຼາຍປີແລ້ວ ໄດ້ແກ່ ຖ້າຜູ້ນັ້ນເພິ່ງດຳຣົງຢູ່ໄດ້ເຖິງ ໖໐,໐໐໐ ກັບແລ້ວ

ຄຳວ່າ ໃນນັ້ນ ໄດ້ແກ່ ໃນອາກິນຈັນຍາຍະຕະນະສະມາບັດ

ຄຳວ່າ ບໍ່ຫວັ່ນໄຫວ ອະທິບາຍວ່າ ບໍ່ຫວັ່ນໄຫວ ບໍ່ພັ່ນພຶງ ບໍ່ຫຼົບໜີ ບໍ່ອັນຕະຣະທານຫາຍໄປ ບໍ່ເສື່ອມໄປ

ອີກໄນໜຶ່ງ ບໍ່ກຳໜັດ ບໍ່ຂັດເຄືອງ ບໍ່ລຸ້ມຫຼົງ ບໍ່ເສື່ອມໄປ ລວມຄວາມວ່າ ຖ້າບຸກຄົນນັ້ນບໍ່ຫວັ່ນໄຫວດຳຣົງຢູ່ໃນພົມມະໂລກນັ້ນໄດ້ຫຼາຍປີແລ້ວ

ຄຳວ່າ ຫຼາຍປີແລ້ວ ໃນຄຳວ່າ ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ ໗ລ໗ ຫຼາຍປີແລ້ວ ອະທິບາຍວ່າ ຫຼາຍນັບປີບໍ່ໄດ້ ຄື ຫຼາຍປີ ຫລາຍຮ້ອຍປີ ຫຼາຍພັນປີ ຫຼາຍແສນປີ ຫຼາຍຮ້ອຍກັບ ຫຼາຍພັນກັບ ຫຼາຍແສນກັບ

ຄຳວ່າ ຂ້າແຕ່ ພຣະອົງຜູ້ມີສະມັນຕະຈັກຂຸ ອະທິບາຍວ່າ ພຣະສັບພັນຍຸຕະຍານ ຕັດຮຽກວ່າ ສະມັນຕະຈັກຂຸ ໗ລ໗ ພຣະຕະຖາຄົດ ຈຶ່ງຊື່ວ່າມີສະມັນຕະຈັກຂຸ ດ້ວຍຈັກຂຸນັ້ນ ລວມຄວາມວ່າ ຂ້າແຕ່ ພຣະອົງຜູ້ມີສະມັນຕະຈັກຂຸ ໗ລ໗ ຫຼາຍປີແລ້ວ

ຄຳວ່າ ບຸກຄົນນັ້ນເປັນຜູ້ຫຼຸດພົ້ນແລ້ວ ມີຄວາມສະງົບເຢັນໃນພົມມະໂລກນັ້ນ ໆ ແລ ຫຼືວ່າວິນຍານຂອງບຸກຄົນນັ້ນຈະເພິ່ງຈຸຕິອີກ ອະທິບາຍວ່າ ບຸກຄົນນັ້ນເພິ່ງເປັນຜູ້ເຖິງຄວາມເປັນຜູ້ສະງົບເຢັນ ຄື ທ່ຽງ ໝັ້ນຄົງ ແນ່ນອນ ມີຄວາມບໍ່ຜັນປ່ຽນໄປເປັນທຳມະດາໃນພົມມະໂລກນັ້ນເອງ ໄດ້ແກ່ ເພິ່ງດຳຣົງຢູ່ແນວນັ້ນ ສະເໝີກັບສິ່ງທີ່ຢຶດຖືວ່າແນ່ນອນໃນພົມມະໂລກນັ້ນ ໆ ເອງ

ອີກໄນໜຶ່ງ ພາມນັ້ນທູນຖາມເຖິງຄວາມແນ່ນອນ ແລະຄວາມຂາດສູນຂອງບຸກຄົນຜູ້ເຂົ້າອາກິນຈັນຍາຍະຕະນະສະມາບັດວ່າ ວິນຍານຂອງເຂົາເພິ່ງຈຸຕິ ຂາດສູນ ຫາຍ ພິນາດ ບໍ່ເພິ່ງມີ ຫຼືວ່າປະຕິສົນທິວິນຍານໃນພົບໃໝ່ເພິ່ງນິບພານໃນກາມທາດ ຮູບທາດ ຫຼື ອະຮູບທາດ ຫຼື ວ່າທູນຖາມເຖິງການປະຣິນິບພານ ແລະປະຕິສົນທິຂອງບຸກຄົນຜູ້ເຂົ້າອາກິນຈັນຍາຍະຕະນະສະມາບັດວ່າ ເຂົາເພິ່ງປະຣິນິບພານດ້ວຍອະນຸປາທິເສສະນິບພານທາດໃນອາກິນຈັນຍາຍະຕະນະສະມາບັດນັ້ນ ໆ ເອງ ຫຼື ວ່າວິນຍານຂອງເຂົາເພິ່ງຈຸຕິ ປະຕິສົນທິວິນຍານ ເພິ່ງບັງເກີດໃນກາມທາດ ຮູບທາດ ຫຼື ອະຮູບທາດອີກ

ຄຳວ່າ ຂອງບຸກຄົນນັ້ນ ໄດ້ແກ່ ຂອງບຸກຄົນນັ້ນ ຄື ຂອງບຸກຄົນຜູ້ເຊັ່ນນັ້ນ ດຳຣົງຢູ່ ດັ່ງນັ້ນ ມີປະການດັ່ງນັ້ນ ປຽບທຽບໄດ້ດັ່ງນັ້ນ ໄດ້ແກ່ ຜູ້ເຂົ້າອາກິນຈັນຍາຍະຕະນະສະມາບັດ ຢູ່ແລ້ວ ລວມຄວາມວ່າ ບຸກຄົນນັ້ນເປັນຜູ້ຫຼຸດພົ້ນແລ້ວ ມີຄວາມສະງົບເຢັນໃນພົມມະໂລກນັ້ນ ນັ້ນແລຫຼືວ່າວິນຍານຂອງບຸກຄົນນັ້ນຈະເພິ່ງຈຸຕິອີກ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ຂ້າແຕ່ ພຣະອົງຜູ້ມີສະມັນຕະຈັກຂຸ
ຖ້າບຸກຄົນນັ້ນບໍ່ຫວັ່ນໄຫວດຳຣົງຢູ່ໃນພົມມະໂລກນັ້ນໄດ້ຫຼາຍປີແລ້ວ
ບຸກຄົນນັ້ນເປັນຜູ້ຫຼຸດພົ້ນແລ້ວ
ມີຄວາມສະງົບເຢັນຢູ່ໃນພົມມະໂລກນັ້ນ ໆ ແລ
ຫຼືວ່າວິນຍານຂອງບຸກຄົນນັ້ນຈະເພິ່ງຈຸຕິອີກ

[໔໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ)

ແປວໄຟທີ່ຖືກກຳລັງລົມພັດໄປ
ຍ່ອມດັບໄປ ກຳນົດບໍ່ໄດ້ ສັນໃດ
ມຸນີພົ້ນແລ້ວຈາກນາມກາຍ ຍ່ອມດັບໄປ
ກຳນົດບໍ່ໄດ້ ສັນນັ້ນ (໖)

ຄຳວ່າ ແປວໄຟຖືກກຳລັງລົມພັດໄປ ຯລຯ ສັນໃດ ອະທິບາຍວ່າ ເປວແຫ່ງໄຟຕັດ ຮຽກວ່າ ແປວໄຟ

## ວ່າດ້ວຍລົມ

ຄຳວ່າ ລົມ ໄດ້ແກ່ ລົມຕາເວັນອອກ ລົມຕາເວັນຕົກ ລົມເໜືອ ລົມໃຕ້ ລົມມີຝຸ່ນ ລົມບໍ່ມີຝຸ່ນ ລົມໜາວ ລົມຮ້ອນ ລົມພັດຄ່ອຍ ລົມພັດແຮງ ລົມບ້າໝູ ລົມຈາກປີກນົກ ລົມຈາກປີກຄຸດ ລົມຈາກໃບຕານ ລົມຈາກພັດ

ຄຳວ່າ ຖືກກຳລັງລົມພັດໄປ ອະທິບາຍວ່າ ຖືກກຳລັງລົມພັດໄປ ຄື ພັດປິວໄປ ພັດພາໄປບໍ່ມີຈຸດໝາຍ ລວມຄວາມວ່າ ແປວໄຟຖືກກຳລັງລົມພັດໄປ ສັນໃດ

ຄຳວ່າ ອຸປະສີວະ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ

ຄຳວ່າ ຍ່ອມດັບ ໃນຄຳວ່າ ຍ່ອມດັບ ກຳນົດບໍ່ໄດ້ ອະທິບາຍວ່າ ຍ່ອມດັບ ຄື ຍ່ອມເຖິງຄວາມບໍ່ມີ ເຖິງຄວາມຕັ້ງຢູ່ບໍ່ໄດ້ ໄດ້ແກ່ ດັບ ສະງົບ ຣະງັບໄປ

ຄຳວ່າ ກຳນົດບໍ່ໄດ້ ອະທິບາຍວ່າ ກຳນົດບໍ່ໄດ້ ຄື ຍົກມາອ້າງບໍ່ໄດ້ ນັບບໍ່ໄດ້ ບັນຍັດບໍ່ໄດ້ວ່າ ແປວໄຟນັ້ນໄປທິດຊື່ນັ້ນແລ້ວ ຄື ໄປທິດຕາເວັນອອກແລ້ວ ໄປທິດຕາເວັນຕົກແລ້ວ ໄປທິດເໜືອແລ້ວ ໄປທິດໃຕ້ແລ້ວ ໄປຂ້າງເທິງແລ້ວ ໄປຂ້າງລຸ່ມແລ້ວ ໄປທິດຂວາງແລ້ວ ໄປທິດສຽງແລ້ວ ຄື ບໍ່ມີເຫດ ບໍ່ມີປັດໄຈ ບໍ່ມີສາເຫດທີ່ຈະເປັນເຄື່ອງກຳນົດໄດ້ ລວມຄວາມວ່າ ຍ່ອມດັບ ກຳນົດບໍ່ໄດ້

ຄຳວ່າ ສັນນັ້ນ ໃນຄຳວ່າ ມຸນີພົ້ນແລ້ວຈາກນາມກາຍ ຯລຯ ສັນນັ້ນ ເປັນຄຳປຽບທຽບໃຫ້ສົມບູນ

ຄຳວ່າ ມຸນີ ອະທິບາຍວ່າ ຍານທ່ານຮຽກວ່າ ໂມນະ ຯລຯ ມຸນີກ້າວລ່ວງກິເລດເຄື່ອງຂ້ອງແລະຕັນຫາເໝືອນຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ຄຳວ່າ ພົ້ນແລ້ວຈາກນາມກາຍ ອະທິບາຍວ່າ ມຸນີນັ້ນພົ້ນແລ້ວຈາກຮູບກາຍມາກ່ອນແລ້ວໂດຍປົກກະຕິ ຄື ກ້າວລ່ວງຮູບກາຍນັ້ນແລ້ວລະສາໄດ້ດ້ວຍວິກຂຳພະນະປະຫານະມຸນີນັ້ນມາເຖິງບ່ອນສຸດພົບ ໄດ້ອະຣິຍະມັກ ໔ ປະການແລ້ວ ຍ້ອນເປັນຜູ້ໄດ້ອະຣິຍະມັກ ໔ ປະການແລ້ວ ທ່ານຈຶ່ງກຳນົດຮູ້ນາມກາຍ ແລະຮູບກາຍໄດ້ ຍ້ອນເປັນຜູ້ກຳນົດຮູ້ນາມກາຍ ແລະຮູບກາຍໄດ້ແລ້ວ ຈຶ່ງພົ້ນ ຄື ຫຼຸດພົ້ນ ຫຼຸດພົ້ນດ້ວຍດີຈາກນາມກາຍ ແລະຮູບກາຍ ດ້ວຍຄວາມຫຼຸດພົ້ນໂດຍບໍ່ຍຶດໝັ້ນຖືໝັ້ນຢ່າງບໍ່ເຫຼືອ ລວມຄວາມວ່າ ມຸນີພົ້ນແລ້ວຈາກນາມກາຍ ຯລຯ ສັນນັ້ນ

ຄຳວ່າ ຍ່ອມດັບໄປ ໃນຄຳວ່າ ຍ່ອມດັບໄປ ກຳນົດບໍ່ໄດ້ ໄດ້ແກ່ ປະຣິນິບພານດ້ວຍອະນຸປາທິເສສະນິບພານທາດ

ຄຳວ່າ ກຳນົດບໍ່ໄດ້ ອະທິບາຍວ່າ ມຸນີນັ້ນປະຣິນິບພານແລ້ວດ້ວຍອະນຸປາທິເສສະນິບພານທາດ ກຳນົດບໍ່ໄດ້ ຄື ຍົກມາອ້າງບໍ່ໄດ້ ນັບບໍ່ໄດ້ ບັນຍັດບໍ່ໄດ້ວ່າ ເປັນກະສັດ ເປັນພາມເປັນແພດ ເປັນສູດ ເປັນຄະລືຫັດ ເປັນບັນພະຊິດ ເປັນເທວະດາ ເປັນມະນຸດ ເປັນຜູ້ມີຮູບ ເປັນຜູ້ບໍ່ມີຮູບ ເປັນຜູ້ມີສັນຍາ ເປັນຜູ້ບໍ່ມີສັນຍາ ເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ບໍ່ມີເຫດບໍ່ມີປັດໄຈ ບໍ່ມີສາເຫດທີ່ຈະເປັນເຄື່ອງກຳນົດ ລວມຄວາມວ່າ ຍ່ອມດັບໄປ ກຳນົດບໍ່ໄດ້ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ)

ແປວໄຟຖືກກຳລັງລົມພັດໄປ
ຍ່ອມດັບ ກຳນົດບໍ່ໄດ້ ສັນໃດ
ມຸນີພົ້ນແລ້ວຈາກນາມກາຍ ຍ່ອມດັບໄປ
ກຳນົດບໍ່ໄດ້ ສັນນັ້ນ

[໔໔] (ທ່ານອຸປະສີວະທູນຖາມວ່າ)

ມຸນີນັ້ນເຖິງຄວາມສະຫຼາຍໄປ ຫຼື ວ່າບໍ່ມີ
ຫຼືວ່າບໍ່ແຕກທຳລາຍຍ້ອນມີຄວາມທ່ຽງແທ້
ພຣະອົງຜູ້ເປັນພຣະມຸນີ ໂຜດພະຍາກອນບັນຫານັ້ນ
ແກ່ຂ້າພຣະອົງໃຫ້ຊັດແຈ້ງດ້ວຍເທີ້ນ
ຍ້ອນທຳນັ້ນພຣະອົງຊົງຮູ້ແຈ້ງແລ້ວ (໗)

ຄຳວ່າ ມຸນີນັ້ນເຖິງຄວາມສະຫຼາຍໄປ ຫຼື ວ່າບໍ່ມີ ອະທິບາຍວ່າ ມຸນີນັ້ນເຖິງຄວາມສະຫຼາຍໄປແລ້ວ ຫຼື ວ່າບໍ່ມີ ຄື ມຸນີນັ້ນດັບໄປແລ້ວ ສູນໄປແລ້ວ ຫາຍໄປແລ້ວ ລວມຄວາມວ່າມຸນີນັ້ນເຖິງຄວາມສະຫຼາຍໄປ ຫຼື ວ່າບໍ່ມີ

ຄຳວ່າ ຫຼືວ່າບໍ່ແຕກທຳລາຍ ຍ້ອນມີຄວາມທ່ຽງແທ້ ອະທິບາຍວ່າ ຫຼືວ່າ ທ່ຽງ ຄື ໝັ້ນຄົງທ່ຽງແທ້ ມີຄວາມບໍ່ຜັນປ່ຽນໄປເປັນທຳມະດາ ໄດ້ແກ່ ເພິ່ງດຳຣົງຢູ່ແນວນັ້ນສະເໝີກັບສິ່ງທີ່ຍຶດຖືວ່າທ່ຽງແທ້ ໃນພົນມະໂລກນັ້ນ ລວມຄວາມວ່າ ຫຼື ວ່າບໍ່ແຕກທຳລາຍ ຍ້ອນມີຄວາມທ່ຽງແທ້

ຄຳວ່າ ບັນຫານັ້ນ ໃນຄຳວ່າ ພຣະອົງຜູ້ເປັນພຣະມຸນີ ໂຜດພະຍາກອນບັນຫານັ້ນແກ່ຂ້າພຣະອົງໃຫ້ຊັດແຈ້ງດ້ວຍເທີ້ນ ໄດ້ແກ່ ບັນຫາທີ່ຂ້າພຣະອົງທູນຖາມ ບັນຫາທີ່ທູນຂໍ ທູນອັນເຊີນທູນໃຫ້ຊົງປະກາດ

ຄຳວ່າ ມຸນີ ອະທິບາຍວ່າ ຍານທ່ານຮຽກວ່າ ໂມນະ ຯລຯ ມຸນີກ້າວລ່ວງກິເລດເຄື່ອງຂ້ອງ ແລະຕັນຫາເໝືອນຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ຄຳວ່າ ໂຜດພະຍາກອນ (ບັນຫານັ້ນ) ໃຫ້ຊັດແຈ້ງດ້ວຍເທີ້ນ ໄດ້ແກ່ ຂໍພຣະອົງໂຜດຕັດບອກ ຄື ໂຜດສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດບັນຫານັ້ນໃຫ້ຊັດແຈ້ງດ້ວຍເທີ້ນ ລວມຄວາມວ່າ ພຣະອົງຜູ້ເປັນພຣະມຸນີ ໂຜດພະຍາກອນບັນຫານັ້ນແກ່ຂ້າພຣະອົງໃຫ້ຊັດແຈ້ງດ້ວຍເທີ້ນ

ຄຳວ່າ ຍ້ອນທຳນັ້ນພຣະອົງຊົງຮູ້ແຈ້ງແລ້ວ ອະທິບາຍວ່າ ຍ້ອນພຣະອົງ ຊົງຮູ້ແຈ້ງແລ້ວ ຄື ຊົງຮູ້ແລ້ວ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງແຈ້ງ ເຮັດໃຫ້ຊັດແຈ້ງແລ້ວ ລວມຄວາມວ່າ ຍ້ອນທຳນັ້ນພຣະອົງຊົງຮູ້ແຈ້ງແລ້ວ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ມຸນີນັ້ນເຖິງຄວາມສະຫຼາຍໄປ ຫຼືວ່າບໍ່ມີ
ຫຼືວ່າບໍ່ແຕກທຳລາຍຍ້ອນມີຄວາມທ່ຽງແທ້
ພຣະອົງຜູ້ເປັນພຣະມຸນີ ໂຜດພະຍາກອນບັນຫານັ້ນ
ແກ່ຂ້າພຣະອົງໃຫ້ຊັດແຈ້ງດ້ວຍເທີ້ນ
ຍ້ອນທຳນັ້ນພຣະອົງຊົງຮູ້ແຈ້ງແລ້ວ

[໔໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ)

ມຸນີຜູ້ເຖິງຄວາມສະຫຼາຍໄປ ຍ່ອມບໍ່ມີ (ອັນໃດ) ເປັນປະມານ
ຊົນທັງຫຼາຍເພິ່ງວ່າກ່າວມຸນີນັ້ນດ້ວຍກິເລດໃດ
ກິເລດນັ້ນຍ່ອມບໍ່ມີແກ່ມຸນີນັ້ນ
(ຍ້ອນ) ເມື່ອມຸນີນັ້ນຖອນທຳທັງປວງໄດ້ເດັດຂາດແລ້ວ
ແມ່ນຄັນລອງແຫ່ງວາທະທັງປວງ
ທ່ານກໍຖອນໄດ້ເດັດຂາດແລ້ວ (ຄືກັນ) (໗)

ຄຳວ່າ ມຸນີຜູ້ເຖິງຄວາມສະຫຼາຍໄປຍ່ອມບໍ່ມີ (ອັນໃດ) ເປັນປະມານ ອະທິບາຍວ່າ ມຸນີຜູ້ເຖິງຄວາມສະຫຼາຍໄປ ຄື ປະຣິນິບພານແລ້ວດ້ວຍອະນຸປາທິເສສະນິບພານທາດ ຍ່ອມບໍ່ມີປະ

ມານ ແຫ່ງຮູບ ບໍ່ມີປະມານແຫ່ງເວທະນາ ບໍ່ມີປະມານແຫ່ງສັນຍາ ບໍ່ມີປະມານແຫ່ງສັງຂານ ບໍ່ມີປະມານແຫ່ງວິນຍານ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ ໄດ້ແກ່ ທ່ານລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ມຸນີຜູ້ເຖິງຄວາມສະຫຼາຍໄປ ຍ່ອມບໍ່ມີ (ອັນໃດ) ເປັນປະມານ

ຄຳວ່າ ອຸປະສີວະ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະສີວະ

ຄຳວ່າ ຊົນທັງຫຼາຍເພິ່ງວ່າກ່າວມຸນີນັ້ນດ້ວຍກິເລດໃດ ກິເລດນັ້ນຍ່ອມບໍ່ມີແກ່ມຸນີນັ້ນ ອະທິບາຍວ່າ ຊົນທັງຫຼາຍທີ່ວ່າກ່າວມຸນີນັ້ນດ້ວຍຣາຄະ ໂທສະ ໂມຫະ ມານະ ທິດຖິ ອຸດທັດຈະ ວິຈິກິດສາ ອະນຸໄສໃດວ່າ ເປັນຜູ້ກຳໜັດ ເປັນຜູ້ຂັດເຄືອງ ເປັນຜູ້ຫຼົງ ເປັນຜູ້ຢຶດຕິດ ເປັນຜູ້ຢຶດໝັ້ນ ເປັນຜູ້ຟຸ້ງຊ່ານ ເປັນຜູ້ລັງເລ ຫຼື ເປັນຜູ້ຕົກຢູ່ໃນພະລັງກິເລດ ກິເລດເຄື່ອງປຸງແຕ່ງເຫຼົ່ານັ້ນທ່ານລະໄດ້ແລ້ວ ຍ້ອນເປັນຜູ້ລະກິເລດເຄື່ອງປຸງແຕ່ງໄດ້ແລ້ວ ຊົນທັງຫຼາຍເພິ່ງວ່າກ່າວທ່ານໂດຍຄະຕິດ້ວຍເຫດໃດວ່າ ເປັນຜູ້ເກີດໃນນະຮົກ ເປັນຜູ້ເກີດໃນກຳເນີດເດຍຣັດສານ ເປັນຜູ້ເກີດໃນເຜດວິໄສ ເປັນມະນຸດ ເປັນເທບ ເປັນຜູ້ມີຮູບ ເປັນຜູ້ບໍ່ມີຮູບ ເປັນຜູ້ມີສັນຍາ ເປັນຜູ້ບໍ່ມີສັນຍາ ຫຼື ເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ຊົນທັງຫຼາຍເພິ່ງວ່າກ່າວ ຄື ເວົ້າ ບອກ ສະແດງ ຊີ້ແຈ້ງດ້ວຍກິເລດໃດ ເຫດນັ້ນບໍ່ມີ ປັດໄຈບໍ່ມີ ສາເຫດບໍ່ມີ ລວມຄວາມວ່າ ຊົນທັງຫຼາຍເພິ່ງວ່າກ່າວມຸນີນັ້ນດ້ວຍກິເລດໃດ ກິເລດນັ້ນຍ່ອມບໍ່ມີແກ່ມຸນີນັ້ນ

ຄຳວ່າ (ຍ້ອນ) ເມື່ອມຸນີນັ້ນຖອນທຳທັງປວງໄດ້ເດັດຂາດແລ້ວ ອະທິບາຍວ່າ ເມື່ອທຳທັງປວງ ຄື ຂັນທັງປວງ ອາຍະຕະນະທັງປວງ ທາດທັງປວງ ຄະຕິທັງປວງ ອຸປະບັດ (ການຖືກຳເນີດ) ທັງປວງ ປະຕິສົນທິທັງປວງ ພົບທັງປວງ ສົງສານທັງປວງ ວັດຕະທັງປວງ ມຸນີນັ້ນຖອນແລ້ວ ຖອນໄດ້ເດັດຂາດແລ້ວ ດຶງຂຶ້ນ ດຶງຂຶ້ນໄດ້ເດັດຂາດແລ້ວ ເພີກຂຶ້ນ ເພີກຂຶ້ນໄດ້ເດັດຂາດແລ້ວ ໄດ້ແກ່ ມຸນີນັ້ນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ (ຍ້ອນ) ເມື່ອມຸນີນັ້ນຖອນທຳທັງປວງໄດ້ເດັດຂາດແລ້ວ

ຄຳວ່າ ແມ່ນຄັນລອງແຫ່ງວາທະທັງປວງ ທ່ານກໍຖອນໄດ້ເດັດຂາດແລ້ວ ອະທິບາຍວ່າ ກິເລດ ຂັນ ແລະອະພິສັງຂານຕັດຮຽກວ່າ ຄັນລອງແຫ່ງວາທະ ວາທະ ຄັນລອງແຫ່ງວາທະ ຊື່ ຄັນລອງແຫ່ງຊື່ ພາສາ ຄັນລອງແຫ່ງພາສາ ບັນຍັດແລະຄັນລອງແຫ່ງບັນຍັດ ມຸນີນັ້ນຖອນແລ້ວ ຖອນໄດ້ເດັດຂາດແລ້ວ ຄື ດຶງຂຶ້ນ ດຶງຂຶ້ນໄດ້ເດັດຂາດແລ້ວ ເພີກຂຶ້ນ ເພີກຂຶ້ນໄດ້ເດັດຂາດແລ້ວ ໄດ້ແກ່ ມຸນີນັ້ນລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ

ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ແມ່ນຄັນລອງ ແຫ່ງວາທະທັງປວງ ທ່ານກໍຖອນໄດ້ເດັດຂາດແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ມຸນີຜູ້ເຖິງຄວາມສະຫຼາຍໄປ ຍ່ອມບໍ່ມີ (ອັນໃດ) ເປັນປະມານ
ຊົນທັງຫຼາຍເພິ່ງວ່າກ່າວມຸນີນັ້ນດ້ວຍກິເລດໃດ
ກິເລດນັ້ນຍ່ອມບໍ່ມີແກ່ມຸນີນັ້ນ
(ຍ້ອນ) ເມື່ອມຸນີນັ້ນຖອນທຳທັງປວງໄດ້ເດັດຂາດແລ້ວ
ແມ່ນຄັນລອງແຫ່ງວາທະທັງປວງ
ທ່ານກໍຖອນໄດ້ເດັດຂາດແລ້ວ (ຄືກັນ)

ພ້ອມກັບການຈົບຄາຖາ ຯລຯ ອຸປະສີວະມານົບນັ່ງປະຄອງອັນຊະລີ ນະມັດສະການພຣະຜູ້ມີພຣະພາກເຈົ້າໂດຍປະກາດວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ

**ອຸປະສີວະມານະວະປັນຫານິດເທດທີ ໖ ຈົບ**

# ໗. ນັນທະມານະວະປັນຫານິດເທດ

## ວ່າດ້ວຍປັນຫາຂອງນັນທະມານົບ

[໔໖] (ທ່ານນັນທະທູນຖາມ ດັ່ງນີ້)

ຊົນທັງຫຼາຍກ່າວວ່າ ມຸນີທັງຫຼາຍມີຢູ່ໃນໂລກ
ຄຳກ່າວນີ້ນັ້ນເປັນແນວໃດ
ຊົນທັງຫຼາຍຮຽກບຸກຄົນຜູ້ເປັນໄປດ້ວຍຍານ
ຫຼືວ່າຮຽກບຸກຄົນຜູ້ເປັນໄປດ້ວຍຄວາມເປັນຢູ່ວ່າ ເປັນມຸນີ (໑)

ຄຳວ່າ ມີຢູ່ ໃນຄຳວ່າ ມຸນີທັງຫຼາຍມີຢູ່ໃນໂລກ ອະທິບາຍວ່າ ມີຢູ່ ຄື ຜາກົດໃຫ້ເຫັນຢູ່ ມີ ຫາໄດ້

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ຯລຯ ໃນອາຍະຕະນະໂລກ

ຄຳວ່າ ມຸນີທັງຫຼາຍ ໄດ້ແກ່ ອາຊີວະກະ ນິຄົນ ຊະດິນ ດາບົດ ຮຽກຊື່ວ່າ ມຸນີ (ຊົນທັງຫຼາຍເຂົ້າໃຈກັນວ່າ ມຸນີທັງຫຼາຍໃນໂລກເປັນເທບ ແຕ່ເທບເຫຼົ່ານັ້ນບໍ່ແມ່ນມຸນີເລີຍ) ລວມຄວາມວ່າ ມຸນີທັງຫຼາຍມີຢູ່ໃນໂລກ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານນັນທະທູນຖາມ ດັ່ງນີ້ ເປັນບົດສົນທິ ຯລຯ

ຄຳວ່າ ທ່ານ ເປັນຄຳກ່າວດ້ວຍຄວາມຮັກ ໆລໆ

ຄຳວ່າ ນັນທະ ເປັນຊື່ຂອງພາມນັ້ນ ໆລໆ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານນັນທະທູນຖາມ ດັ່ງນີ້

ຄຳວ່າ ຊົນທັງຫຼາຍ ໃນຄຳວ່າ ຊົນທັງຫຼາຍກ່າວວ່າ ໆລໆ ຄຳກ່າວນີ້ນັ້ນເປັນແນວໃດ ໄດ້ແກ່ກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາແລະມະນຸດ

ຄຳວ່າ ຍ່ອມກ່າວ ໄດ້ແກ່ ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງ

ຄຳວ່າ ຄຳກ່າວນີ້ນັ້ນເປັນແນວໃດ ເປັນຄຳທູນຖາມດ້ວຍຄວາມສົງໄສ ເປັນຄຳຖາມດ້ວຍຄວາມຂ້ອງໃຈ ເປັນຄຳຖາມ ໒ ແງ່ ເປັນຄຳຖາມມີແງ່ມຸມຫຼາກຫຼາຍວ່າ ຢ່າງນີ້ແມ່ນບໍ ບໍ່ແມ່ນແມ່ນບໍ ເປັນອັນໃດບໍ ເປັນແນວໃດບໍ ລວມຄວາມວ່າ ຊົນທັງຫຼາຍກ່າວວ່າ ໆລໆ ຄຳກ່າວນີ້ນັ້ນເປັນແນວໃດ?

ຄຳວ່າ ຊົນທັງຫຼາຍຮຽກບຸກຄົນຜູ້ເປັນໄປດ້ວຍຍານວ່າເປັນມຸນີ ອະທິບາຍວ່າ ຊົນທັງຫຼາຍຍ່ອມຮຽກ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງບຸກຄົນຜູ້ປະກອບ ຄື ປະກອບພ້ອມ ດຳເນີນໄປດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍຍານໃນສະມາບັດ ໘ ຫຼື ຍານໃນອະພິນຍາ ໕ ວ່າເປັນມຸນີ ລວມຄວາມວ່າ ຊົນທັງຫຼາຍຮຽກບຸກຄົນຜູ້ເປັນໄປດ້ວຍຍານວ່າເປັນມຸນີ

ຄຳວ່າ ຫຼື ວ່າຮຽກບຸກຄົນຜູ້ເປັນໄປດ້ວຍຄວາມເປັນຢູ່ວ່າ ເປັນມຸນີ ອະທິບາຍວ່າ ຊົນທັງຫຼາຍ ຍ່ອມຮຽກ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງບຸກຄົນຜູ້ປະກອບ ຄື ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍຄວາມພຽນຂອງບຸກຄົນຜູ້ດຳເນີນຊີວິດເສົ້າໝອງ ຜູ້ເຮັດກິດທີ່ເຮັດໄດ້ຍາກຍິ່ງຫຼາຍຢ່າງວ່າ ເປັນມຸນີ ລວມຄວາມວ່າ ຫຼືວ່າຮຽກບຸກຄົນຜູ້ເປັນໄປດ້ວຍຄວາມເປັນຢູ່ວ່າ ເປັນມຸນີ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

(ທ່ານນັນທະທູນຖາມ ດັ່ງນີ້)

ຊົນທັງຫຼາຍກ່າວວ່າ ມຸນີທັງຫຼາຍມີຢູ່ໃນໂລກ
ຄຳກ່າວນີ້ນັ້ນເປັນແນວໃດ
ຊົນທັງຫຼາຍຮຽກບຸກຄົນຜູ້ເປັນໄປດ້ວຍຍານ
ຫຼືວ່າຮຽກບຸກຄົນຜູ້ເປັນໄປດ້ວຍຄວາມເປັນຢູ່ວ່າ ເປັນມຸນີ

[໘໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ນັນທະ ຊົນທັງຫຼາຍຜູ້ສະຫຼາດໃນໂລກນີ້
ບໍ່ຮຽກບຸກຄົນວ່າເປັນມຸນີ ຍ້ອນໄດ້ເຫັນຍ້ອນໄດ້ຟັງແລະຍ້ອນໄດ້ຮູ້
ເຮົາຮຽກເຫຼົ່າຊົນຜູ້ກຳຈັດເສນາມານໄດ້ແລ້ວ
ຜູ້ບໍ່ມີຄວາມທຸກ ບໍ່ມີຄວາມຫວັງ ທ່ຽວຈາຣິກຢູ່ວ່າ ເປັນມຸນີ (໒)

ຄຳວ່າ ບໍ່ຮຽກ ໆລໆ ຍ້ອນໄດ້ເຫັນ ຍ້ອນໄດ້ຟັງແລະຍ້ອນໄດ້ຮູ້ ໄດ້ແກ່ ບໍ່ຮຽກ ຍ້ອນຄວາມມົດຈົດແຫ່ງຮູບທີ່ໄດ້ເຫັນ

ຄຳວ່າ ບໍ່ຮຽກ ໆລໆ ຍ້ອນໄດ້ຟັງ ໄດ້ແກ່ ບໍ່ຮຽກ ຍ້ອນຄວາມມົດຈົດແຫ່ງສຽງທີ່ໄດ້ຍິນ

ຄຳວ່າ ບໍ່ຮຽກ ໆລໆ ຍ້ອນໄດ້ຮູ້ ໄດ້ແກ່ ບໍ່ຮຽກຍ້ອນຍານໃນສະມາບັດ ໘ ແດ່ ບໍ່ຮຽກຍ້ອນຍານໃນອະພິນຍາ ໕ ແດ່ ບໍ່ຮຽກຍ້ອນມົດສາຍານແດ່ ລວມຄວາມວ່າ ບໍ່ຮຽກ ໆລໆ ຍ້ອນໄດ້ເຫັນ ຍ້ອນໄດ້ຟັງ ແລະ ຍ້ອນໄດ້ຮູ້

ຄຳວ່າ ຊົນທັງຫຼາຍຜູ້ສະຫຼາດ ໃນຄຳວ່າ ນັນທະ ຊົນທັງຫຼາຍຜູ້ສະຫຼາດໃນໂລກນີ້ບໍ່ຮຽກບຸກຄົນວ່າເປັນມຸນີ ອະທິບາຍວ່າ ຊົນທັງຫຼາຍຜູ້ສະຫຼາດໃນຂັນ ສະຫຼາດໃນທາດ ສະຫຼາດໃນອາຍະຕະນະ ສະຫຼາດໃນປະຕິດຈະສະມຸບບາດ ສະຫຼາດໃນສະຕິປັດຖານ ສະຫຼາດໃນສຳມັບປະທານ ສະຫຼາດໃນອິດທິບາດ ສະຫຼາດໃນອິນຊີ ສະຫຼາດໃນພະລະ ສະຫຼາດໃນໂພດຊົງສະຫຼາດໃນມັກ ສະຫຼາດໃນຜົນ ສະຫຼາດໃນນິບພານ ຍ່ອມບໍ່ຮຽກ ຄື ຍ່ອມບໍ່ເວົ້າ ບໍ່ບອກ ບໍ່ສະແດງ ບໍ່ຊີ້ແຈ່ງບຸກຄົນຜູ້ປະກອບ ຄື ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປເປັນໄປພ້ອມ ພຽບພ້ອມດ້ວຍຄວາມສະອາດແຫ່ງຮູບທີ່ໄດ້ເຫັນ ຄວາມມົດຈົດແຫ່ງສຽງທີ່ໄດ້ຍິນຍານໃນສະມາບັດ ໘ ຍານໃນອະພິນຍາ ໕ ມົດສາຍານ ຮູບທີ່ໄດ້ເຫັນ ຫຼື ສຽງທີ່ໄດ້ຍິນວ່າເປັນມຸນີ ລວມຄວາມວ່າ ນັນທະ ຊົນທັງຫຼາຍຜູ້ສະຫຼາດໃນໂລກນີ້ ບໍ່ຮຽກບຸກຄົນວ່າເປັນມຸນີ

## ວ່າດ້ວຍເສນາມານ

ຄຳວ່າ ເຮົາຮຽກເຫຼົ່າຊົນຜູ້ກຳຈັດເສນາມານໄດ້ແລ້ວ ຜູ້ບໍ່ມີຄວາມທຸກ ບໍ່ມີຄວາມຫວັງທ່ຽວຈາຣິກຢູ່ວ່າ ເປັນມຸນີ ອະທິບາຍວ່າ ເສນາມານຕັດຮຽກວ່າ ເສນາ ກາຍທຸດຈະຣິດ ຊື່ວ່າເສນາມານ ວະຈີທຸດຈະຣິດ ຊື່ວ່າເສນາມານ ມະໂນທຸດຈະຣິດ ຊື່ວ່າເສນາມານ ຣາຄະ ຊື່ວ່າເສນາມານ ໂທສະ ຊື່ວ່າເສນາມານ ໂມຫະ ຊື່ວ່າເສນາມານ ໂກທະ ໆລໆ ອຸປະນາຫະ ໆລໆ ມັກຂະ ໆລໆ ປະລາສະ ໆລໆ ອິດສາ ໆລໆ ມັດສະຣິຍະ ໆລໆ ມາຍາ ໆລໆ ສາເຖີຍຍະ ໆລໆຖຳພະ ໆລໆ ສາຣຳພະ ໆລໆ ມານະ ໆລໆ ອະຕິມານະ ໆລໆ ມະທະ ໆລໆ ປະມາທະໆລໆ ກິເລດທຸກຊະນິດ ໆລໆ ທຸດຈະຣິດທຸກທາງ ໆລໆ ຄວາມກະວົນກະວາຍທຸກຢ່າງ ໆລໆຄວາມຮ້ອນຮົນທຸກສະຖານ ໆລໆ ຄວາມເດືອດຮ້ອນທຸກປະການ ໆລໆ ອະກຸສະລາພິສັງຂານທຸກປະເພດ ຊື່ວ່າ ເສນາມານ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ກິເລດການເຮົາຮຽກວ່າເສນາກອງທີ ໑ ຂອງທ່ານ
ຄວາມບໍ່ຍິນດີເຮົາຮຽກວ່າເສນາກອງທີ ໒ ຂອງທ່ານ
ຄວາມຫິວກະຫາຍເຮົາຮຽກວ່າເສນາກອງທີ ໓ ຂອງທ່ານ

ຕັນຫາເຮົາຮຽກວ່າເສນາກອງທີ ໔ ຂອງທ່ານ
ຖີນະມິດທະເຮົາຮຽກວ່າເສນາກອງທີ ໕ ຂອງທ່ານ
ຄວາມຢ້ານເຮົາຮຽກວ່າເສນາກອງທີ ໖ ຂອງທ່ານ

ວິຈິກິດສາເຮົາຮຽກວ່າເສນາກອງທີ ໗ ຂອງທ່ານ
ມັກຂະແລະຖໍາພະເຮົາຮຽກວ່າເສນາກອງທີ ໘ ຂອງທ່ານ
ລາບ ຄວາມສັນເສີນ ສັກກາຣະແລະຍົດທີ່ໄດ້ມາຜິດ ໆ

ເຮົາຮຽກວ່າເສນາກອງທີ ໙ ຂອງທ່ານ
ການຍົກຕົນແລະຂົ່ມຜູ້ອື່ນເຮົາຮຽກວ່າເສນາກອງທີ ໑໐ ຂອງທ່ານ
ມານເອີຍ ເສນາຂອງທ່ານນີ້ ມີປົກກະຕິປະຫານຜູ້ມີທໍາດໍາ

ຄົນຢ້ານເອົາຊະນະເສນານັ້ນບໍ່ໄດ້
ແຕ່ຄົນກ້າ ເມື່ອຊະນະໄດ້ແລ້ວຍ່ອມໄດ້ຄວາມສຸກ

ເມື່ອໃດ ເສນາມານທັງໝົດແລະກິເລດທີ່ສ້າງເສນາຝ່າຍກົງກັນຂ້າມທັງປວງ ຖືກຊິນເຫຼົ່າໃດ ພິຊິດ ແລະເຮັດໃຫ້ພ່າຍແພ້ ຖືກທໍາລາຍ ກໍາຈັດ ເຮັດໃຫ້ບໍ່ສູ້ໜ້າແລ້ວດ້ວຍອະຣິຍະມັກ ໔ ເມື່ອນັ້ນ ຊິນເຫຼົ່ານັ້ນ ຮຽກວ່າ ຜູ້ກໍາຈັດເສນາມານໄດ້ແລ້ວ

ຄໍາວ່າ ຜູ້ບໍ່ມີຄວາມທຸກ ອະທິບາຍວ່າ ຣາຄະ ໂທສະ ໂມຫະ ໂກທະ ອຸປະນາຫະ ເປັນຄວາມທຸກ ຯລຯ ອະກຸສະລາພິສັງຂານທຸກປະເພດ ເປັນທຸກ ຄວາມທຸກເຫຼົ່ານີ້ ຊິນເຫຼົ່າໃດລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຊິນເຫຼົ່ານັ້ນຕັດຮຽກວ່າ ຜູ້ບໍ່ມີຄວາມທຸກ

ຄໍາວ່າ ບໍ່ມີຄວາມຫວັງ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມຫວັງ ໄດ້ແກ່ ຄວາມກໍາໜັດ ຄວາມກໍາໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຄວາມຫວັງຄືຕັນຫານີ້ ຊິນເຫຼົ່າໃດລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຊິນເຫຼົ່ານັ້ນຕັດຮຽກວ່າ ບໍ່ມີຄວາມຫວັງ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄໍາວ່າ ເຮົາຮຽກເຫຼົ່າຊິນຜູ້ກໍາຈັດເສນາມານໄດ້ແລ້ວ ຜູ້ບໍ່ມີຄວາມທຸກ ບໍ່ມີຄວາມຫວັງ ທ່ຽວຈາຣິກຢູ່ວ່າ ເປັນມຸນີ ອະທິບາຍວ່າ ເຮົາຮຽກ ຄື ບອກ ສະແດງ ບັນຍັດ ກໍານົດ ເປີດເຜີຍ ຈໍາແນກ ເຮັດໃຫ້ງ່າຍ ປະກາດວ່າ ຊິນເຫຼົ່າໃດກໍາຈັດເສນາມານໄດ້ແລ້ວ ບໍ່ມີທຸກແລະບໍ່ມີຄວາມຫວັງ ທ່ຽວຈາຣິກຢູ່ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດໍາເນີນໄປ ຍັງຊີວິດໃຫ້ດໍາເນີນໄປ ຊິນເຫຼົ່ານັ້ນຈຶ່ງເປັນມຸນີໃນໂລກໄດ້ ລວມຄວາມວ່າ ເຮົາຮຽກເຫຼົ່າຊິນຜູ້ກໍາຈັດເສນາມານໄດ້ແລ້ວ

ຜູ້ບໍ່ມີຄວາມທຸກ ບໍ່ມີຄວາມຫວັງ ທ່ຽວຈາຣິກຢູ່ວ່າ ເປັນມຸນີ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກ ເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ນັນທະ ຊົນທັງຫຼາຍຜູ້ສະຫຼາດໃນໂລກນີ້
ບໍ່ຮຽກບຸກຄົນວ່າເປັນມຸນີ ຍ້ອນໄດ້ເຫັນຍ້ອນໄດ້ຟັງ ແລະຍ້ອນໄດ້ຮູ້
ເຮົາຮຽກເຫຼົ່າຊົນຜູ້ກຳຈັດເສນາມານໄດ້ແລ້ວ
ຜູ້ບໍ່ມີຄວາມທຸກ ບໍ່ມີຄວາມຫວັງ ທ່ຽວຈາຣິກຢູ່ວ່າ ເປັນມຸນີ

[໔໗] (ທ່ານນັນທະທູນຖາມ ດັ່ງນີ້)

ສະມະນະພາມບາງພວກຍ່ອມກ່າວຄວາມບໍລິສຸດ
ຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່
ຍ່ອມກ່າວຄວາມບໍລິສຸດຍ້ອນສີນວັດແດ່
ຍ່ອມກ່າວຄວາມບໍລິສຸດຍ້ອນພິທີຫຼາກຫຼາຍແດ່

ຂ້າແຕ່ພຣະຜູ້ມີພຣະພາກເຈົ້າຜູ້ນິຣະທຸກ
ສະມະນະພາມພວກນັ້ນເປັນຜູ້ປະພຶດຕົນເຄັ່ງຄັດ
ໃນຫຼັກການຂອງຕົນນັ້ນ ຂ້າມຊາດແລະຊະຣາໄດ້ແດ່ບໍ
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດບອກບັນຫານັ້ນ ແກ່ຂ້າພຣະອົງດ້ວຍເທີ້ນ (໓)

ຄຳວ່າ ບາງພວກ ໃນຄຳວ່າ ສະມະນະພາມບາງພວກ ໄດ້ແກ່ ທຸກສິ່ງ ໂດຍອາການທັງໝົດ ທຸກຢ່າງບໍ່ເຫຼືອ ບໍ່ມີສ່ວນເຫຼືອໂດຍປະການທັງປວງ ຄຳວ່າ ບາງພວກ ນີ້ ເປັນຄຳກ່າວລວມ ໆ ໄວ້ທັງໝົດ

ຄຳວ່າ ສະມະນະ ໄດ້ແກ່ ນັກບວດພວກໃດພວກໜຶ່ງ ເຊິ່ງເຂົ້າເຖິງການບວດເປັນປະຣິພາຊົກ ເຖິງການບວດເປັນປະຣິພາຊົກພາຍນອກຈາກທຳວິໄນນີ້

ຄຳວ່າ ພາມ ໄດ້ແກ່ ຄົນເຫຼົ່າໃດເຫຼົ່າໜຶ່ງ ຜູ້ກ່າວອ້າງວ່າຕົນຈະເລີນບາງພວກ ລວມຄວາມວ່າ ສະມະນະພາມບາງພວກ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານນັນທະທູນຖາມ ດັ່ງນີ້ ເປັນບົດສົນທິ ຯລຯ

ຄຳວ່າ ທ່ານ ເປັນຄຳກ່າວດ້ວຍຄວາມຮັກ ຯລຯ

ຄຳວ່າ ນັນທະ ເປັນຊື່ຂອງພາມນັ້ນ ຯລຯ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານນັນທະທູນຖາມ ດັ່ງນີ້

ຄຳວ່າ ຍ່ອມກ່າວຄວາມມົດຈົດຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່ ອະທິບາຍວ່າ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ໄດ້ແກ່ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນຮູບທີ່ໄດ້ເຫັນແດ່ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນສຽງທີ່ໄດ້ຍິນແດ່ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນຮູບທີ່ໄດ້ເຫັນ ແລະສຽງທີ່ໄດ້ຍິນແດ່ ລວມຄວາມວ່າ ຍ່ອມກ່າວຄວາມມົດຈົດຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່

ຄຳວ່າ ຍ່ອມກ່າວຄວາມມົດຈົດຍ້ອນສີນວັດແດ່ ອະທິບາຍວ່າ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ໄດ້ແກ່ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນສີນແດ່ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນວັດແດ່ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນສີນວັດແດ່ ລວມຄວາມວ່າ ຍ່ອມກ່າວຄວາມມົດຈົດຍ້ອນສີນວັດແດ່

ຄຳວ່າ ຍ່ອມກ່າວຄວາມມົດຈົດຍ້ອນພິທີຫຼາກຫຼາຍແດ່ ອະທິບາຍວ່າ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ໄດ້ແກ່ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນພິທີຫຼາຍຢ່າງແດ່

ຄຳວ່າ ໄດ້ແດ່ບໍ ໃນຄຳວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຯລຯ ສະມະນະພາມພວກນັ້ນເປັນຜູ້ປະພຶດຕົນເຄັ່ງຄັດໃນຫຼັກການຂອງຕົນນັ້ນ ຯລຯ ໄດ້ແດ່ບໍ ເປັນຄຳຖາມດ້ວຍຄວາມສົງໄສ ເປັນຄຳຖາມດ້ວຍຄວາມຂ້ອງໃຈ ເປັນຄຳຖາມ ໔ ແງ່ ເປັນຄຳຖາມ ມີແງ່ມຸມຫຼາກຫຼາຍວ່າ ຢ່າງນີ້ແມ່ນບໍ ບໍ່ແມ່ນແມ່ນບໍ ເປັນອັນໃດນໍ່ ເປັນແນວໃດນໍ ລວມຄວາມວ່າ ໄດ້ແດ່ບໍ

ຄຳວ່າ ພວກນັ້ນ ໄດ້ແກ່ ສະມະນະພາມຜູ້ຖືທິດຖິ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຯລຯ ສະມະນະພາມພວກນັ້ນ ເປັນຜູ້ປະພຶດຕົນເຄັ່ງຄັດໃນຫຼັກການຂອງຕົນນັ້ນ ຯລຯ ໄດ້ແດ່ບໍ

ຄຳວ່າ ໃນ ຯລຯ ນັ້ນ ໃນຄຳວ່າ ເປັນຜູ້ປະພຶດຕົນເຄັ່ງຄັດໃນຫຼັກການຂອງຕົນນັ້ນ ອະທິບາຍວ່າ ໃນຫຼັກການຂອງຕົນ ຄື ໃນຄວາມຖືກໃຈ ຄວາມພໍໃຈ ລັດທິຂອງຕົນ

ຄຳວ່າ ເຄັ່ງຄັດ ໄດ້ແກ່ ຣະວັງ ຣະມັດຣະວັງ ຄຸ້ມຄອງ ປົກປັກຮັກສາສັງວອນລະວັງແລ້ວ

ຄຳວ່າ ປະພຶດ ໄດ້ແກ່ ປະພຶດ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຯລຯ ສະມະນະພາມພວກນັ້ນເປັນຜູ້ປະພຶດຕົນເຄັ່ງຄັດໃນຫຼັກການຂອງຕົນນັ້ນ ຯລຯ ໄດ້ແດ່ບໍ

ຄຳວ່າ ຜູ້ນິຣະທຸກ ຯລຯ ຂ້າມຊາດແລະຊະຣາ ອະທິບາຍວ່າ ຂ້າມ ຄື ຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍຊາດຊະຣາ ແລະມໍຣະນະ

ຄຳວ່າ ຜູ້ນິຣະທຸກ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາລົບ ຄຳວ່າ ຜູ້ນິຣະທຸກ ນີ້ ເປັນຄຳກ່າວທີ່ມີຄວາມເຄົາລົບ ແລະຄວາມຢຳເກງ ລວມຄວາມວ່າ ຜູ້ນິຣະທຸກ ຯລຯ ຂ້າມຊາດແລະຊະຣາ

ຄຳວ່າ ຂ້າພຣະອົງຂໍທູນຖາມບັນຫານັ້ນ ໃນຄຳວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ ໄດ້ແກ່ ຂ້າພຣະອົງຂໍທູນຖາມ ຄື ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດບັນຫານັ້ນວ່າ ຂໍພຣະອົງໂຜດຕັດບອກແກ່ຂ້າ ພຣະອົງເທີ້ນ ລວມຄວາມວ່າ ຂ້າພຣະອົງຂໍທູນຖາມບັນຫານັ້ນ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ

ຄຳວ່າ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ ອະທິບາຍວ່າ ຂໍພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດ ລວມຄວາມວ່າ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງ ດ້ວຍເທີ້ນ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

(ທ່ານນັນທະທູນຖາມ ດັ່ງນີ້)

ສະມະນະພາມບາງພວກຍ່ອມກ່າວຄວາມມົດຈົດ
ຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່
ຍ່ອມກ່າວຄວາມມົດຈົດຍ້ອນສີນວັດແດ່
ຍ່ອມກ່າວຄວາມມົດຈົດຍ້ອນພິທີຫຼາກຫຼາຍແດ່

ຂ້າແຕ່ ພຣະຜູ້ມີພຣະພາກເຈົ້າຜູ້ນິຣະທຸກ
ສະມະນະພາມພວກນັ້ນເປັນຜູ້ປະພຶດຕົນເຄັ່ງຄັດ
ໃນຫຼັກການຂອງຕົນນັ້ນ ຂ້າມຊາດແລະຊະຣາໄດ້ແດ່ບໍ
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ

[໔໙] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນັນທະ)

ສະມະນະພາມບາງພວກຍ່ອມກ່າວຄວາມບໍລິສຸດ
ຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່
ຍ່ອມກ່າວຄວາມບໍລິສຸດຍ້ອນສີນວັດແດ່
ຍ່ອມກ່າວຄວາມບໍລິສຸດຍ້ອນພິທີຫຼາກຫຼາຍແດ່
ສະມະນະພາມພວກນັ້ນ
ແມ່ນປະພຶດຕົນເຄັ່ງຄັດຢູ່ໃນຫຼັກການຂອງຕົນນັ້ນ ກໍຈິງ
ແຕ່ເຮົາກ່າວວ່າ ພວກເຂົາຍັງຂ້າມຊາດແລະຊະຣາໄປບໍ່ໄດ້ (໔)

ຄຳວ່າ ບາງພວກ ໃນຄຳວ່າ ສະມະນະພາມບາງພວກ ໄດ້ແກ່ ທຸກສິ່ງ ໂດຍອາການທັງໝົດ ທຸກຢ່າງ ບໍ່ເຫຼືອ ບໍ່ມີສ່ວນເຫຼືອໂດຍປະການທັງປວງ ຄຳວ່າ ບາງພວກນີ້ ເປັນຄຳກ່າວລວມ ໆ ໄວ້ທັງໝົດ

ຄຳວ່າ ສະມະນະ ໄດ້ແກ່ ນັກບວດພວກໃດພວກໜຶ່ງ ເຊິ່ງເຂົ້າເຖິງການບວດເປັນປະຣິພາຊົກ ເຖິງການບວດເປັນປະຣິພາຊົກພາຍນອກຈາກທຳວິໄນນີ້

ຄຳວ່າ ພາມ ໄດ້ແກ່ ຄົນເຫຼົ່າໃດເຫຼົ່າໜຶ່ງ ຜູ້ກ່າວອ້າງວ່າຕົນຈະເລີນບາງພວກ ລວມຄວາມວ່າ ສະມະນະພາມບາງພວກ

ຄຳວ່າ ນັນທະ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນັນທະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່ານັນທະ

ຄຳວ່າ ຍ່ອມກ່າວຄວາມບໍລິສຸດຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່ ອະທິບາຍວ່າ ຍ່ອມກ່າວ ຄື ຍ່ອມເວົ້າ ບອກສະແດງ ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ໄດ້ແກ່ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນຮູບທີ່ໄດ້ເຫັນແດ່ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນສຽງທີ່ໄດ້ຍິນແດ່ ຍ່ອມກ່າວ ຄື ຍ່ອມເວົ້າ ບອກສະແດງ ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນຮູບທີ່ໄດ້ເຫັນແດ່ ແລະຍ້ອນສຽງທີ່ໄດ້ຍິນແດ່ ລວມຄວາມວ່າ ຍ່ອມກ່າວຄວາມບໍລິສຸດຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່

ຄຳວ່າ ຍ່ອມກ່າວຄວາມບໍລິສຸດຍ້ອນສີນວັດແດ່ ອະທິບາຍວ່າ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ໄດ້ແກ່ ຄວາມຫຼຸດໄປ

ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງ ຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນສີນແດ່ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງ ຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນວັດແດ່ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງ ຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນສີນວັດແດ່ ລວມຄວາມວ່າ ຍ່ອມກ່າວຄວາມມົດຈົດຍ້ອນສີນວັດແດ່

ຄຳວ່າ ຍ່ອມກ່າວຄວາມມົດຈົດຍ້ອນພິທີຫຼາກຫຼາຍແດ່ ອະທິບາຍວ່າ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ໄດ້ແກ່ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນພິທີຫຼາກຫຼາຍແດ່ ລວມຄວາມວ່າ ຍ່ອມກ່າວຄວາມມົດຈົດຍ້ອນພິທີຫຼາກຫຼາຍແດ່

ຄຳວ່າ ແມ່ນຯລຯກໍຈິງ ໃນຄຳວ່າ ສະມະນະພາມພວກນັ້ນແມ່ນປະພຶດຕົນເຄັ່ງຄັດຢູ່ໃນຫຼັກການຂອງຕົນນັ້ນ ກໍຈິງ ເປັນບົດສົນທິ ເປັນຄຳເຊື່ອມບົດ ເຮັດບົດໃຫ້ບໍລິບູນ ເປັນຄວາມສຳພັນແຫ່ງອັກສອນ ເປັນຄວາມສະຫຼະສະຫຼວຍແຫ່ງພະຍັນຊະນະ ຄຳວ່າ ແມ່ນ ຯລຯ ກໍຈິງນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ພວກນັ້ນ ໄດ້ແກ່ ສະມະນະພາມຜູ້ຖືທິດຖິຢູ່

ຄຳວ່າ ໃນຯລຯ ນັ້ນ ໄດ້ແກ່ ໃນຫຼັກການຂອງຕົນ ຄື ໃນຄວາມຖືກໃຈ ຄວາມພໍໃຈ ໃນລັດທິຂອງຕົນ

ຄຳວ່າ ເຄັ່ງຄັດ ໄດ້ແກ່ ຣະວັງ ຣະມັດຣະວັງ ຄຸ້ມຄອງ ປົກປັກຮັກສາສັງວອນລະວັງແລ້ວ

ຄຳວ່າ ປະພຶດ ໄດ້ແກ່ ປະພຶດ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ສະມະນະພາມພວກນັ້ນ ແມ່ນປະພຶດຕົນເຄັ່ງຄັດຢູ່ໃນຫຼັກການຂອງຕົນນັ້ນ ກໍຈິງ

ຄຳວ່າ ແຕ່ເຮົາກ່າວວ່າພວກເຂົາຍັງຂ້າມຊາດ ແລະຊະຣາໄປບໍ່ໄດ້ ອະທິບາຍວ່າ ເຮົາກ່າວ ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດວ່າ ສະມະນະພາມພວກນັ້ນຂ້າມບໍ່ໄດ້ ຄື ຂ້າມໄປບໍ່ໄດ້ ຂ້າມພົ້ນບໍ່ໄດ້ ກ້າວລ່ວງບໍ່ໄດ້ ລ່ວງເລີຍຊາດຊະຣາ ແລະມໍຣະນະໄປບໍ່ໄດ້ ໄດ້ແກ່ ອອກຈາກຊາດຊະຣາ ແລະມໍຣະນະບໍ່ໄດ້ ຄື ສະລັດອອກບໍ່ໄດ້ ກ້າວພົ້ນບໍ່ໄດ້ ກ້າວລ່ວງບໍ່ໄດ້ ລ່ວງເລີຍຈາກຊາດ ຊະຣາ ແລະມໍຣະນະບໍ່ໄດ້ ໄດ້ແກ່ ໝຸນວຽນຢູ່ພາຍໃນຊາດ ຊະຣາແລະມໍຣະນະ ໝຸນວຽນຢູ່ພາຍໃນທາງແຫ່ງສົງສານ ໄປຕາມຊາດ ຖືກຊະຣາຕິດຕາມ ຖືກພະຍາທິຄອບງຳ ມໍຣະນະຍ່ຳຍີ ບໍ່ມີບ່ອນປົກປ້ອງ ບໍ່ມີບ່ອນຫຼົບຫຼີກ ບໍ່ມີບ່ອນເພິ່ງ ບໍ່ມີບ່ອນອາໄສ ລວມຄວາມວ່າ ສະມະນະພາມພວກນັ້ນ ແມ່ນປະພຶດຕົນເຄັ່ງຄັດຢູ່ໃນຫຼັກການຂອງຕົນນັ້ນ ກໍຈິງ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນັນທະ)

ສະມະນະພາມບາງພວກຍ່ອມກ່າວຄວາມບໍລິສຸດ
ຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່
ຍ່ອມກ່າວຄວາມບໍລິສຸດຍ້ອນສີນວັດແດ່
ຍ່ອມກ່າວຄວາມບໍລິສຸດຍ້ອນພິທີຫຼາກຫຼາຍແດ່

ສະມະນະພາມພວກນັ້ນ
ແມ່ນປະພຶດຕົນເຄັ່ງຄັດຢູ່ໃນຫຼັກການຂອງຕົນນັ້ນ ກໍຈິງ
ແຕ່ເຮົາກ່າວວ່າ ພວກເຂົາຍັງຂ້າມຊາດແລະຊະຣາໄປບໍ່ໄດ້

[໕໐] (ທ່ານນັນທະທູນຖາມ ດັ່ງນີ້)

ສະມະນະພາມບາງພວກຍ່ອມກ່າວຄວາມບໍລິສຸດ
ຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່
ຍ່ອມກ່າວຄວາມບໍລິສຸດຍ້ອນສີນວັດແດ່
ຍ່ອມກ່າວຄວາມບໍລິສຸດຍ້ອນພິທີຫຼາກຫຼາຍແດ່

ຫາກພຣະອົງຜູ້ເປັນພຣະມຸນີຕັດວ່າ
ສະມະນະພາມພວກນັ້ນຍັງຂ້າມຫ້ວງກິເລດບໍ່ໄດ້
ຂ້າແດ່ ພຣະອົງຜູ້ນິຣະທຸກ ເມື່ອເປັນເຊັ່ນນັ້ນ
ໃຜນໍ ໃນເທວະໂລກແລະມະນຸດໂລກ
ຊື່ວ່າຂ້າມຊາດແລະຊະຣາໄປໄດ້

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ (໕)

ຄໍາວ່າ ບາງພວກ ໃນຄໍາວ່າ ສະມະນະພາມບາງພວກ ໄດ້ແກ່ ທຸກສິ່ງໂດຍອາການທັງໝົດທຸກຢ່າງ ບໍ່ເຫຼືອ ບໍ່ມີສ່ວນເຫຼືອໂດຍປະການທັງປວງ ຄໍາວ່າ ບາງພວກ ນີ້ ເປັນຄໍາກ່າວລວມ ໆ ໄວ້ທັງໝົດ ລວມຄວາມວ່າ ສະມະນະພາມບາງພວກ

ຄໍາວ່າ ດັ່ງນີ້ ໃນຄໍາວ່າ ທ່ານນັນທະທູນຖາມ ດັ່ງນີ້ ເປັນບົດສືບທີ ຯລຯ

ຄໍາວ່າ ທ່ານ ເປັນຄໍາກ່າວດ້ວຍຄວາມຮັກ

ຄໍາວ່າ ນັນທະ ເປັນຊື່ຂອງພາມນັ້ນ ຯລຯ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານນັນທະທູນຖາມ ດັ່ງນີ້

ຄຳວ່າ ຍ່ອມກ່າວຄວາມບໍລິສຸດຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່ ອະທິບາຍວ່າ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ໄດ້ແກ່ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນຮູບທີ່ໄດ້ເຫັນແດ່ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງ ຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນສຽງທີ່ໄດ້ຍິນແດ່ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງ ຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່ ລວມຄວາມວ່າ ຍ່ອມກ່າວຄວາມບໍລິສຸດຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່

ຄຳວ່າ ຍ່ອມກ່າວເຖິງຄວາມບໍລິສຸດຍ້ອນສີນວັດແດ່ ອະທິບາຍວ່າ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ໄດ້ແກ່ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຍ້ອນສີນແດ່ ຍ້ອນວັດແດ່ ຍ່ອມກ່າວ ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນສີນວັດແດ່ ລວມຄວາມວ່າ ຍ່ອມກ່າວເຖິງຄວາມບໍລິສຸດຍ້ອນສີນວັດແດ່

ຄຳວ່າ ຍ່ອມກ່າວຄວາມບໍລິສຸດຍ້ອນພິທີຫຼາກຫຼາຍແດ່ ອະທິບາຍວ່າ ຍ່ອມກ່າວ ຄື ຍ່ອມເວົ້າ ບອກ ສະແດງ ຊີ້ແຈ່ງຄວາມບໍລິສຸດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຍ້ອນພິທີຫຼາກຫຼາຍແດ່ ລວມຄວາມວ່າ ຍ່ອມກ່າວຄວາມບໍລິສຸດຍ້ອນພິທີຫຼາກຫຼາຍແດ່

ຄຳວ່າ ຫາກ ຯລຯ ສະມະນະພາມພວກນັ້ນ ໃນຄຳວ່າ ຫາກພຣະອົງຜູ້ເປັນພຣະມຸນີຕັດວ່າ ສະມະນະພາມພວກນັ້ນຍັງຂ້າມຫ້ວງກິເລດບໍ່ໄດ້ ໄດ້ແກ່ ສະມະນະພາມຜູ້ຖືທິດຖິ

ຄຳວ່າ ພຣະອົງຜູ້ເປັນພຣະມຸນີ ອະທິບາຍວ່າ ຍານ ທ່ານຮຽກວ່າ ໂມນະ ຯລຯ ພຣະອົງກ້າວລ່ວງກິເລດເຄື່ອງຂ້ອງ ແລະຕັນຫາເໝືອນຕາໜ່າງໄດ້ແລ້ວ ຊື່ວ່າ ພຣະມຸນີ

ຄຳວ່າ ຕັດວ່າສະມະນະພາມພວກນັ້ນວ່າ ຍັງຂ້າມຫ້ວງກິເລດບໍ່ໄດ້ ອະທິບາຍວ່າ ສະມະນະພາມພວກນັ້ນ ຂ້າມບໍ່ໄດ້ ຄື ຂ້າມຂຶ້ນບໍ່ໄດ້ ຂ້າມພົ້ນບໍ່ໄດ້ ກ້າວລ່ວງບໍ່ໄດ້ ກ້າວພົ້ນບໍ່ໄດ້ ລ່ວງເລີຍ ກາໂມຄະ ພະໂວຄະ ທິດໂຖຄະ ອະວິດໂຊຄະບໍ່ໄດ້ ໄດ້ແກ່ ໝຸນວຽນ ຢູ່ພາຍໃນຊາດ ຊະຣາ ແລະມໍຣະນະ ໝຸນວຽນຢູ່ພາຍໃນທາງແຫ່ງສົງສານ ໄປຕາມຊາດ ຖືກຊະຣາຕິດຕາມ ຖືກພະຍາທິຄອບງຳ ມໍຣະນະຍ່ຳຍີ ບໍ່ມີບ່ອນປົກປ້ອງ ບໍ່ມີບ່ອນຫຼົບຫຼີກ ບໍ່ມີບ່ອນເພິ່ງ ບໍ່ມີບ່ອນອາໄສ

ຄຳວ່າ ຕັດ ໄດ້ແກ່ ຕັດ ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດ ລວມຄວາມວ່າ ທາກ ໆລໆ ພຣະອົງຜູ້ເປັນພຣະມຸນີຕັດວ່າ ສະມະນະພາມພວກນັ້ນຍັງຂ້າມຫ້ວງກິເລດບໍ່ໄດ້

ຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ເມື່ອເປັນເຊັ່ນນັ້ນ ໃຜນໍ ໃນເທວະໂລກ ແລະມະນຸດໂລກ ຊື່ວ່າ ຂ້າມຊາດ ແລະຊະຣາໄປໄດ້ ອະທິບາຍວ່າ ເມື່ອເປັນເຊັ່ນນັ້ນ ໃຜກັນນໍໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ພ້ອມທັງເທວະດາແລະມະນຸດ ຈຶ່ງຂ້າມ ຄື ຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍຊາດ ຊະຣາ ແລະມໍຣະນະໄປໄດ້

ຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາລົບ ຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ນີ້ ເປັນຄຳກ່າວທີ່ມີຄວາມເຄົາລົບແລະຄວາມຢຳເກງລວມຄວາມວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ເມື່ອເປັນເຊັ່ນນັ້ນ ໃຜນໍ ໃນເທວະໂລກ ແລະມະນຸດໂລກ ຊື່ວ່າຂ້າມຊາດ ແລະຊະຣາໄປໄດ້

ຄຳວ່າ ຂ້າພຣະອົງ ຂໍທູນຖາມບັນຫານັ້ນ ໃນຄຳວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ ອະທິບາຍວ່າ ຂ້າພຣະອົງຂໍທູນຖາມ ຄື ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດບັນຫານັ້ນວ່າ ຂໍພຣະອົງໂຜດຕັດບອກບັນຫານັ້ນ ແກ່ຂ້າພຣະອົງດ້ວຍເທີ້ນ ລວມຄວາມວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ໆລໆ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ

ຄຳວ່າ ຂໍພຣະອົງໂຜດຕັດບອກບັນຫານັ້ນ ແກ່ຂ້າພຣະອົງດ້ວຍເທີ້ນ ອະທິບາຍວ່າ ຂໍພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດ ລວມຄວາມວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ ຂໍພຣະອົງໂຜດຕັດບອກບັນຫານັ້ນ ແກ່ຂ້າພຣະອົງດ້ວຍເທີ້ນ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

(ທ່ານນັນທະທູນຖາມ ດັ່ງນີ້)

ສະມະນະພາມບາງພວກຍ່ອມກ່າວຄວາມມົດຈົດ
ຍ້ອນຮູບທີ່ໄດ້ເຫັນແດ່ ຍ້ອນສຽງທີ່ໄດ້ຍິນແດ່
ຍ່ອມກ່າວຄວາມມົດຈົດຍ້ອນສີນວັດແດ່
ຍ່ອມກ່າວຄວາມມົດຈົດຍ້ອນພິທີຫຼາກຫຼາຍແດ່

ຫາກພຣະອົງຜູ້ເປັນພຣະມຸນີຕັດວ່າ
ສະມະນະພາມພວກນັ້ນຍັງຂ້າມຫ້ວງກິເລດບໍ່ໄດ້
ຂ້າແຕ່ພຣະອົງຜູ້ນິຣະທຸກ ເມື່ອເປັນເຊັ່ນນັ້ນ
ໃຜນໍ ໃນເທວະໂລກ ແລະມະນຸດໂລກ
ຊື່ວ່າຂ້າມຊາດ ແລະຊະຣາໄປໄດ້

ຂ້າແຕ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງຂໍທູນຖາມບັນຫານັ້ນ
ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງດ້ວຍເທີ້ນ

[໕໑[(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນັນທະ)

ເຮົາບໍ່ກ່າວວ່າ ສະມະນະພາມທັງໝົດ
ຖືກຊາດແລະຊະຣາໂອບລ້ອມ ນໍຣະຊົນເຫຼົ່າໃດໃນໂລກນີ້
ລະຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ອາລົມທີ່ໄດ້ຮັບຮູ້
ຫຼືສິນວັດໄດ້ທັງໝົດ ທັງລະພິທີຫຼາກຫຼາຍທັງປວງ
ກຳນົດຮູ້ຕັນຫາໄດ້ແລ້ວ ເປັນຜູ້ໝົດອາສະວະ
ເຮົາກ່າວວ່ານໍຣະຊົນເຫຼົ່ານັ້ນແລ
ຊື່ວ່າເປັນຜູ້ຂ້າມຫ້ວງກິເລດໄດ້ແລ້ວ (໕)

ຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນັນທະ ເຮົາບໍ່ກ່າວວ່າ ສະມະນະພາມທັງໝົດຖືກຊາດ ແລະຊະຣາໂອບລ້ອມ ອະທິບາຍວ່າ ນັນທະ ເຮົາບໍ່ກ່າວວ່າ ສະມະນະພາມ ທັງໝົດຖືກຊາດ ແລະຊະຣາຫຸ້ມຫໍ່ໄວ້ ໂອບລ້ອມ ຄື ຫ້ອມລ້ອມ ຄອບຄຸມ ປົກຄຸມ ບົດບັງໄວ້ແລ້ວ ເຮົາກ່າວ ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດວ່າ ສະມະນະພາມຜູ້ລະຊາດ ຊະຣາ ແລະມໍຣະນະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນັນທະ ເຮົາບໍ່ກ່າວວ່າ ສະມະນະພາມທັງໝົດຖືກຊາດ ແລະຊະຣາໂອບລ້ອມ

ຄຳວ່າ ນໍຣະຊົນເຫຼົ່າໃດໃນໂລກນີ້ ລະຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ອາລົມທີ່ໄດ້ຮັບຮູ້ຫຼືສິນວັດໄດ້ທັງໝົດ ອະທິບາຍວ່າ ນໍຣະຊົນເຫຼົ່າໃດ ລະ ຄື ສະລະ ລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມມົດຈິດແຫ່ງຮູບທີ່ໄດ້ເຫັນທຸກຢ່າງ ລະຄວາມມົດຈິດແຫ່ງສຽງທີ່ໄດ້ຍິນທຸກຢ່າງ ຯລຯ ຄວາມມົດຈິດແຫ່ງອາລົມທີ່ໄດ້ຮັບຮູ້ທຸກຢ່າງ ຯລຯ ຄວາມມົດຈິດແຫ່ງຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ແລະອາລົມທີ່ໄດ້ຮັບຮູ້ທຸກຢ່າງ ຯລຯ ຄວາມມົດຈິດແຫ່ງສິນທຸກຢ່າງ ຯລຯ ຄວາມມົດຈິດແຫ່ງວັດທຸກຢ່າງ ນໍຣະຊົນໃດ ລະ ຄື ສະລະ ລະຖິ້ມ ບັນເທົາ

ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມມົດຈົດແຫ່ງສິນວັດທຸກຢ່າງ ລວມຄວາມວ່າ ນໍຣະຊົນເຫຼົ່າໃດໃນໂລກນີ້ ລະຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ອາລົມທີ່ໄດ້ຮັບຮູ້ຫຼືສິນວັດໄດ້ທັງໝົດ

ຄຳວ່າ ທັງລະພິທີຫຼາກຫຼາຍທັງປວງ ອະທິບາຍວ່າ ລະ ຄື ສະລະ ລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປຍ້ອນມຸງຄຸນທີ່ເລົ່າລືກັນຫຼາກຫຼາຍຮູບແບບ ລວມຄວາມວ່າ ທັງລະພິທີຫຼາກຫຼາຍທັງປວງ

ຄຳວ່າ ຕັນຫາ ໃນຄຳວ່າ ນໍຣະຊົນເຫຼົ່າໃດ ກຳນົດຮູ້ຕັນຫາໄດ້ແລ້ວ ເປັນຜູ້ໝົດອາສະວະ ເຮົາກ່າວວ່າ ນໍຣະຊົນເຫຼົ່ານັ້ນແລ ຊື່ວ່າເປັນຜູ້ຂ້າມຫ້ວງກິເລດໄດ້ແລ້ວ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ

## ວ່າດ້ວຍປະຣິນຍາ ໓

ຄຳວ່າ ກຳນົດຮູ້ຕັນຫາໄດ້ແລ້ວ ອະທິບາຍວ່າ ກຳນົດຮູ້ຕັນຫາດ້ວຍປະຣິນຍາ ໓ ຄື

໑. ຍາຕະປະຣິນຍາ (ການກຳນົດຮູ້ຂັ້ນຮູ້ຈັກ)
໒. ຕີຣະນະປະຣິນຍາ (ການກຳນົດຮູ້ຂັ້ນພິຈາລະນາ)
໓. ປະຫານະປະຣິນຍາ (ການກຳນົດຮູ້ຂັ້ນລະ)

ຍາຕະປະຣິນຍາ ເປັນແນວໃດ?

ຄື ນັກປາດກຳນົດຮູ້ຕັນຫາ ຄື ຮູ້ ເຫັນວ່າ ນີ້ຮູບຕັນຫາ ນີ້ສັດທະຕັນຫາ ນີ້ຄັນທະຕັນຫາ ນີ້ຣະສະຕັນຫາ ນີ້ໂຜດຖັບພະຕັນຫາ ນີ້ທຳມະຕັນຫາ ນີ້ຊື່ວ່າຍາຕະປະຣິນຍາ

ຕີຣະນະປະຣິນຍາ ເປັນແນວໃດ?

ຄື ນັກປາດເຮັດສິ່ງທີ່ຮູ້ແລ້ວໃຫ້ຜາກົດແນວນີ້ແລ້ວ ພິຈາລະນາຕັນຫາ ຄືພິຈາລະນາໂດຍຄວາມເປັນຂອງບໍ່ທ່ຽງ ໆລໆ ເປັນທຸກ ໆລໆ ເປັນໂຣກ ໆລໆ ເປັນເໝືອນຫົວຝີ ໆລໆ ເປັນຂອງທີ່ຕ້ອງສະລັດອອກໄປ ນີ້ຊື່ວ່າຕີຣະນະປະຣິນຍາ

ປະຫານະປະຣິນຍາ ເປັນແນວໃດ?

ຄື ນັກປາດເມື່ອພິຈາລະນາເຫັນແນວນີ້ແລ້ວ ຍ່ອມລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີຕັນຫາອີກ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈໃນຕັນຫານັ້ນສາ ຕັນຫານັ້ນທ່ານທັງຫຼາຍລະໄດ້ເດັດຂາດແລ້ວ ຈັກຖືກຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ນີ້ຊື່ວ່າປະຫານະປະຣິນຍາ

ຄຳວ່າ ກຳນົດຮູ້ຕັນຫາໄດ້ແລ້ວ ໄດ້ແກ່ ກຳນົດຮູ້ຕັນຫາດ້ວຍປະຣິນຍາ ໓ ຢ່າງເຫຼົ່ານີ້

## ວ່າດ້ວຍອາສະວະ ໔

ຄຳວ່າ ເປັນຜູ້ໝົດອາສະວະ ໄດ້ແກ່ ອາສະວະ ໔ ຢ່າງ ຄື

໑. ກາມາສະວະ (ອາສະວະຄືກາມ)
໒. ພະວາສະວະ (ອາສະວະຄືພົບ)
໓. ທິດຖາສະວະ (ອາສະວະຄືທິດຖິ)
໔. ອະວິດຊາສະວະ (ອາສະວະຄືອະວິດຊາ)

ອາສະວະເຫຼົ່ານີ້ ບໍຣະຊົນເຫຼົ່າໃດລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ບໍຣະຊົນເຫຼົ່ານັ້ນ ຕັດຮຽກວ່າ ເປັນຜູ້ໝົດອາສະວະ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ບໍຣະຊົນເຫຼົ່າໃດ ຯລຯ ກຳນົດຮູ້ຕັນຫາໄດ້ແລ້ວ ເປັນຜູ້ໝົດອາສະວະ ເຮົາກ່າວວ່າ ບໍຣະຊົນເຫຼົ່ານັ້ນແລ ຊື່ວ່າ ເປັນຜູ້ຂ້າມຫ້ວງກິເລດໄດ້ແລ້ວ ອະທິບາຍວ່າ ບໍຣະຊົນເຫຼົ່າໃດກຳນົດຮູ້ຕັນຫາໄດ້ແລ້ວ ເປັນຜູ້ໝົດອາສະວະ ເຮົາກ່າວ ຄື ບອກ ສະແດງ ບັນຍັດ ກຳນົດເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດວ່າ ບໍຣະຊົນເຫຼົ່ານັ້ນຂ້າມ ຄື ຂ້າມຂຶ້ນ ຂ້າມພົ້ນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນ ກາໂມຄະ ພະໂວຄະ ທິດໂຖຄະ ອະວິດໂຊຄະ ທາງແຫ່ງສົງສານທຸກຢ່າງໄດ້ແລ້ວ ລວມຄວາມວ່າ ບໍຣະຊົນເຫຼົ່າໃດກຳນົດຮູ້ຕັນຫາໄດ້ແລ້ວ ເປັນຜູ້ໝົດອາສະວະ ເຮົາກ່າວວ່າບໍຣະຊົນເຫຼົ່ານັ້ນແລ ຊື່ວ່າເປັນຜູ້ຂ້າມຫ້ວງກິເລດໄດ້ແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນັນທະ)

ເຮົາບໍ່ກ່າວວ່າ ສະມະນະພາມທັງໝົດ
ຖືກຊາດແລະຊະຣາໂອບລ້ອມ ບໍຣະຊົນເຫຼົ່າໃດໃນໂລກນີ້
ລະຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ອາລົມທີ່ໄດ້ຮັບຮູ້
ຫຼືສິນວັດໄດ້ທັງໝົດ ທັງລະພິທີຫຼາກຫຼາຍທັງປວງ
ກຳນົດຮູ້ຕັນຫາໄດ້ແລ້ວ ເປັນຜູ້ໝົດອາສະວະ
ເຮົາກ່າວວ່າບໍຣະຊົນເຫຼົ່ານັ້ນແລ
ຊື່ວ່າເປັນຜູ້ຂ້າມຫ້ວງກິເລດໄດ້ແລ້ວ

[໕໒] (ທ່ານນັນທະຂາບທູນວ່າ)

ຂ້າພຣະອົງພໍໃຈພຣະດຳຣັດນີ້ຂອງພຣະອົງ

ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ຂ້າແຕ່ພຣະໂຄດົມ
ທຳທີ່ປາສະຈາກອຸປະທິ ພຣະອົງຕັດໄວ້ດີແລ້ວ
ນໍຣະຊົນເຫຼົ່າໃດໃນໂລກນີ້ ລະຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ
ອາລົມທີ່ໄດ້ຮັບຮູ້ຫຼືສິນວັດໄດ້ທັງໝົດ
ທັງລະພິທີຫຼາກຫຼາຍທັງປວງ ກຳນົດຮູ້ຕັນຫາໄດ້ແລ້ວ
ເປັນຜູ້ໝົດອາສະວະ ແມ່ນຂ້າພຣະອົງກໍກ່າວວ່າ
ນໍຣະຊົນເຫຼົ່ານັ້ນ ຊື່ວ່າເປັນຜູ້ຂ້າມຫ້ວງກິເລດໄດ້ແລ້ວ (໗)

ຄຳວ່າ ນີ້ ໃນຄຳວ່າ ຯລຯ ຂ້າພຣະອົງພໍໃຈພຣະດຳຣັດນີ້ ຂອງພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ອະທິບາຍວ່າ ຂ້າພຣະອົງພໍໃຈ ພໍໃຈ ຄື ເບີກບານໃຈ ອະນຸໂມທະນາ ຕ້ອງການ ຍິນດີ ທູນຂໍ ປາຖະໜາ ມຸ້ງໝາຍ ມຸ້ງຫວັງພຣະດຳຣັດ ຄື ຄຳທີ່ເປັນແນວທາງ ເທດສະໜາ ຄຳສັ່ງສອນ ຄຳພ່ຳສອນນີ້

ຄຳວ່າ ພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ແນວໃດ?

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາສີນຂັນອັນຍິ່ງໃຫຍ່ ຈຶ່ງຊື່ວ່າຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ຯລຯ ພຣະຜູ້ຊົງເປັນເທບຍິ່ງກວ່າເທບປະທັບຢູ່ບ່ອນໃດ ພຣະຜູ້ຊົງອົງອາດກວ່ານໍຣະຊົນປະທັບຢູ່ບ່ອນໃດ ຈຶ່ງຊື່ວ່າພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ລວມຄວາມວ່າ ຂ້າພຣະອົງພໍໃຈພຣະດຳຣັດນີ້ຂອງພຣະອົງຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ຄຳວ່າ ຕັດໄວ້ດີແລ້ວ ໃນຄຳວ່າ ຂ້າແຕ່ພຣະໂຄດົມ ທຳທີ່ປາສະຈາກອຸປະທິ ພຣະອົງຕັດໄວ້ດີແລ້ວ ອະທິບາຍວ່າ ຕັດໄວ້ດີແລ້ວ ຄື ຕັດບອກໄວ້ດີແລ້ວ ສະແດງໄວ້ດີແລ້ວ ບັນຍັດໄວ້ດີແລ້ວ ກຳນົດໄວ້ດີແລ້ວ ເປີດເຜີຍໄວ້ດີແລ້ວ ຈຳແນກໄວ້ດີແລ້ວ ເຮັດໃຫ້ງ່າຍດີແລ້ວ ປະກາດໄວ້ດີແລ້ວ

ຄຳວ່າ ຂ້າແຕ່ພຣະໂຄດົມ ທຳທີ່ປາສະຈາກອຸປະທິ ອະທິບາຍວ່າ ກິເລດ ຂັນ ແລະອະພິສັງຂານ ຕັດຮຽກວ່າ ອຸປະທິ ການລະອຸປະທິ ຄວາມເຂົ້າໄປສະງົບອຸປະທິ ຄວາມສະລັດຖິ້ມອຸປະທິ ຄວາມສະງົບຮະງັບອຸປະທິ ຊື່ວ່າ ອະມະຕະນິບພານ ລວມຄວາມວ່າ ຂ້າແຕ່ພຣະໂຄດົມ ທຳທີ່ປາສະຈາກອຸປະທິພຣະອົງຕັດໄວ້ດີແລ້ວ

ຄຳວ່າ ນໍຣະຊົນເຫຼົ່າໃດໃນໂລກນີ້ ລະຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ອາລົມທີ່ໄດ້ຮັບຮູ້ຫຼືສິນວັດໄດ້ທັງໝົດ ອະທິບາຍວ່າ ນໍຣະຊົນເຫຼົ່າໃດ ລະ ຄື ສະລະ ລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ເຊິ່ງຄວາມມົດຈົດແຫ່ງຮູບທີ່ໄດ້ເຫັນທຸກຢ່າງ ໄດ້ແກ່ ລະ ຄືສະລະ ລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ເຊິ່ງຄວາມມົດຈົດແຫ່ງສຽງທີ່ໄດ້ຍິນທຸກຢ່າງ ຯລຯ ຄວາມມົດຈົດແຫ່ງອາລົມທີ່ໄດ້ຮັບຮູ້ທຸກຢ່າງ ຯລຯ ຄວາມມົດຈົດແຫ່ງຮູບ

ທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ແລະອາລົມທີ່ໄດ້ຮັບຮູ້ ຯລຯ ຄວາມມົດຈົດແຫ່ງສິນທຸກຢ່າງ ຯລຯ ຄວາມໝົດແຫ່ງວັດທຸກຢ່າງ ຯລຯ ລະ ຄື ສະລະ ລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ເຊິ່ງຄວາມມົດຈົດແຫ່ງສິນວັດທຸກຢ່າງ ລວມຄວາມວ່າ ນໍຣະຊົນເຫຼົ່າໃດໃນໂລກນີ້ ລະຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ອາລົມທີ່ໄດ້ຮັບຮູ້ຫຼືສິນວັດໄດ້ທັງໝົດ

ຄຳວ່າ ທັງລະພິທີຫຼາກຫຼາຍທັງປວງ ອະທິບາຍວ່າ ລະ ຄື ສະລະ ລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ເຊິ່ງຄວາມມົດຈົດ ຄື ຄວາມສະອາດ ຄວາມບໍລິສຸດ ຄວາມຫຼຸດໄປ ຄວາມພົ້ນໄປ ຄວາມຫຼຸດພົ້ນໄປ ຍ້ອນມຸງຄຸນທີ່ເລົ່າລືກັນຫຼາກຫຼາຍຮູບແບບ ລວມຄວາມວ່າ ທັງລະພິທີຫຼາກຫຼາຍທັງປວງ

ຄຳວ່າ ນໍຣະຊົນເຫຼົ່າໃດ ຯລຯ ກຳນົດຮູ້ຕັນຫາໄດ້ແລ້ວ ເປັນຜູ້ໝົດອາສະວະ ແມ່ນຂ້າພຣະອົງກ່າວວ່າ ນໍຣະຊົນເຫຼົ່ານັ້ນ ຊື່ວ່າເປັນຜູ້ຂ້າມຫ້ວງກິເລດໄດ້ແລ້ວ ອະທິບາຍວ່າ

ຄຳວ່າ ຕັນຫາ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາໂຜດຖັບພະຕັນຫາ ທຳມະຕັນຫາ

## ວ່າດ້ວຍປະຣິນຍາ ໓

ຄຳວ່າ ກຳນົດຮູ້ຕັນຫາໄດ້ແລ້ວ ໄດ້ແກ່ ກຳນົດຮູ້ຕັນຫາດ້ວຍປະຣິນຍາ ໓ ຄື

໑. ຍາຕະປະຣິນຍາ

໒. ຕີຣະນະປະຣິນຍາ

໓. ປະຫານະປະຣິນຍາ

ຍາຕະປະຣິນຍາ ເປັນແນວໃດ?

ຄື ນັກປາດກຳນົດຮູ້ຕັນຫາ ຄື ຮູ້ ເຫັນວ່າ ນີ້ຮູບຕັນຫາ ນີ້ສັດທະຕັນຫາ ນີ້ຄັນທະຕັນຫາ ນີ້ຣະສະຕັນຫາ ນີ້ໂຜດຖັບພະຕັນຫາ ນີ້ທຳມະຕັນຫາ ນີ້ຊື່ວ່າ ຍາຕະປະຣິນຍາ

ຕີຣະນະປະຣິນຍາ ເປັນແນວໃດ?

ຄື ນັກປາດເຮັດສິ່ງທີ່ຮູ້ແລ້ວໃຫ້ຜາກົດແນວນີ້ແລ້ວ ພິຈາລະນາຕັນຫາ ຄື ພິຈາລະນາໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນໂຣກ ເປັນເໝືອນຫົວຝີ ເປັນເໝືອນລູກສອນ ເປັນຂອງລຳບາກ ເປັນອາພາດ ເປັນຢ່າງອື່ນ ເປັນຂອງຊຸດໂຊມ ເປັນສະໜຽດ ເປັນອຸປັດທະວະ ເປັນໄພ ເປັນອຸປະສັກ ເປັນຂອງຫວັ່ນໄຫວ ເປັນຂອງຜຸພັງ ເປັນຂອງບໍ່ຍັ່ງຍືນ ເປັນຂອງບໍ່ມີບ່ອນຕ້ານທານ ເປັນຂອງບໍ່ມີບ່ອນຫຼົບຫຼີກ ເປັນຂອງບໍ່ມີບ່ອນເພິ່ງ ເປັນຂອງບໍ່ມີບ່ອນອາໄສ ເປັນຂອງວ່າງ ເປັນຂອງເປົ່າ ເປັນຂອງສູນ ເປັນອະນັດຕາ ເປັນຂອງມີໂທດ ເປັນຂອງຜັນປ່ຽນໄປເປັນທຳມະດາ ເປັນຂອງບໍ່ມີແກ່ນສານ ເປັນເຫດແຫ່ງຄວາມລຳບາກ ເປັນເໝືອນເພດຊະ

ຄາດ ເປັນຂອງປາສະຈາກຄວາມຈະເລີນ ເປັນຂອງມີອາສະວະ ເປັນຂອງທີ່ຖືກເຫດປັດໄຈປຸງແຕ່ງ ເປັນເຫຍື່ອແຫ່ງມານ ມີຊາດເປັນທຳມະດາ ມີຊະຣາເປັນທຳມະດາ ມີພະຍາທິເປັນທຳມະດາ ມີມໍຣະນະເປັນທຳມະດາ ມີໂສກະ ປະຣິເທວະ ທຸກຂະ ໂທມະນັດ ອຸປາຍາດເປັນທຳມະດາ ມີຄວາມເສົ້າໝອງເປັນທຳມະດາ ເປັນເຫດເກີດທຸກ ຕັ້ງຢູ່ບໍ່ໄດ້ ຫາຄວາມ ແຊ່ມຊື່ນ ບໍ່ໄດ້ ເປັນໂທດ ເປັນຂອງທີ່ຕ້ອງສະລັດອອກໄປ ນີ້ຊື່ວ່າຕີຣະນະປະຣິນຍາ

ປະຫານະປະຣິນຍາ ເປັນແນວໃດ?

ຄື ນັກປາດ ເມື່ອພິຈາລະນາເຫັນແນວນີ້ແລ້ວ ຍ່ອມລະ ບັນເທົາ ເຮັດໃຫ້ໝົດສິ້ນໄປໃຫ້ເຖິງຄວາມບໍ່ມີຕັນຫາອີກ ນີ້ຊື່ວ່າ ປະຫານະປະຣິນຍາ

ຄຳວ່າ ກຳນົດຮູ້ຕັນຫາໄດ້ແລ້ວ ໄດ້ແກ່ກຳນົດຮູ້ຕັນຫານັ້ນ ດ້ວຍປະຣິນຍາ ໓ ຢ່າງເຫຼົ່ານີ້

## ວ່າດ້ວຍອາສະວະ ໔

ຄຳວ່າ ເປັນຜູ້ໝົດອາສະວະ ໄດ້ແກ່ ອາສະວະ ໔ ຢ່າງ ຄື

໑. ກາມາສະວະ

໒. ພະວາສະວະ

໓. ທິດຖາສະວະ

໔. ອະວິດຊາສະວະ

ອາສະວະເຫຼົ່ານີ້ນໍຣະຊົນເຫຼົ່າໃດ ລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ນໍຣະຊົນເຫຼົ່ານັ້ນຕັດຮຽກວ່າ ເປັນຜູ້ໝົດອາສະວະ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ນໍຣະຊົນເຫຼົ່າໃດ ຯລຯ ກຳນົດຮູ້ຕັນຫາໄດ້ແລ້ວ ເປັນຜູ້ໝົດອາສະວະ ແມ່ນຂ້າພຣະອົງກໍກ່າວວ່າ ນໍຣະຊົນເຫຼົ່ານັ້ນ ຊື່ວ່າ ເປັນຜູ້ຂ້າມຫ້ວງກິເລດໄດ້ແລ້ວ ອະທິບາຍວ່າ ນໍຣະຊົນເຫຼົ່າໃດກຳນົດຮູ້ຕັນຫາແລ້ວ ເປັນຜູ້ໝົດອາສະວະ ເຮົາກ່າວ ຄື ບອກວ່າ ນໍຣະຊົນເຫຼົ່ານັ້ນຂ້າມຄື ຂ້າມຂຶ້ນ ຂ້າມພົ້ນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນກາໂມຄະ ພະໂວຄະ ທິດໂຖຄະ ອະວິດໂຊຄະ ທາງແຫ່ງສົງສານທຸກຢ່າງໄດ້ແລ້ວ ລວມຄວາມວ່າ ນໍຣະຊົນເຫຼົ່າໃດກຳນົດຮູ້ຕັນຫາແລ້ວເປັນຜູ້ໝົດອາສະວະ ເຮົາກ່າວວ່ານໍຣະຊົນເຫຼົ່ານັ້ນແລ ຊື່ວ່າເປັນຜູ້ຂ້າມຫ້ວງກິເລດໄດ້ແລ້ວ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ຂ້າພຣະອົງພໍໃຈພຣະດຳຣັດນີ້ຂອງພຣະອົງ
ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ຂ້າແຕ່ ພຣະໂຄດົມ

ທໍາທີ່ປາສະຈາກອຸປະທິ ພຣະອົງຕັດໄວ້ດີແລ້ວ
ນໍຣະຊົນເຫຼົ່າໃດໃນໂລກນີ້ ລະຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ
ອາລົມທີ່ໄດ້ຮັບຮູ້ຫຼືສິນວັດໄດ້ທັງໝົດ
ທັງລະພິທີຫຼາກຫຼາຍທັງປວງ ກໍານົດຮູ້ຕັນຫາໄດ້ແລ້ວ
ເປັນຜູ້ໝົດອາສະວະ ແມ່ນຂ້າພຣະອົງກໍກ່າວວ່າ
ນໍຣະຊົນເຫຼົ່ານັ້ນ ຊື່ວ່າເປັນຜູ້ຂ້າມຫ້ວງກິເລດໄດ້ແລ້ວ

ພ້ອມກັບການຈົບຄາຖາ ຯລຯ ນັນທະມານົບຯລຯ ໂດຍປະກາດວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ

**ນັນທະມານະວະປັນຫານິດເທດທີ ໗ ຈົບ**

## ໘. ເຫມະກະມານະວະປັນຫານິດເທດ

## ວ່າດ້ວຍປັນຫາຂອງເຫມະກະມານົບ

[໕໖] (ທ່ານເຫມະກະທູນຖາມ ດັ່ງນີ້)

ກ່ອນແຕ່ສາດສະໜາຂອງພຣະໂຄດົມ
ອາຈານເຈົ້າລັດທິເຫຼົ່າໃດເຄີຍພະຍາກອນແກ່ຂ້າພຣະອົງວ່າ
ເຫດນີ້ໄດ້ເປັນມາແລ້ວແບວນີ້ ຈັກເປັນແບວນີ້
ຄໍາພະຍາກອນທັງໝົດນັ້ນເປັນຄໍາທີ່ເຊື່ອສືບຕໍ່ກັນມາ
ຄໍາພະຍາກອນທັງໝົດນັ້ນມີແຕ່ຈະເຮັດໃຫ້ຄຶດນຶກໄປຕ່າງ ໆ
ຂ້າພຣະອົງຈຶ່ງບໍ່ຍິນດີໃນຄໍາພະຍາກອນເຫຼົ່ານັ້ນ (໑)

ຄໍາວ່າ ອາຈານເຈົ້າລັດທິເຫຼົ່າໃດ ໃນຄໍາວ່າ ກ່ອນ ຯລຯ ອາຈານເຈົ້າລັດທິເຫຼົ່າໃດ ເຄີຍພະຍາກອນແກ່ຂ້າພຣະອົງ ອະທິບາຍວ່າ ພາມພາວະຣີ ແລະອາຈານຄົນອື່ນ ໆ ຂອງພາມພາວະຣີ ເຄີຍພະຍາກອນ ຄື ເຄີຍບອກ ສະແດງ ບັນຍັດ ກໍານົດ ເປີດເຜີຍ ຈໍາແນກ ເຮັດໃຫ້ງ່າຍ ປະກາດຫຼັກການຂອງຕົນ ຄວາມຖືກໃຈ ຄວາມພໍໃຈ ລັດທິ ອັດທະຍາໄສ ຄວາມປະສົງຂອງຕົນ ລວມຄວາມວ່າ ກ່ອນ ຯລຯ ອາຈານເຈົ້າລັດທິເຫຼົ່າໃດເຄີຍພະຍາກອນແກ່ຂ້າພຣະອົງ

ຄໍາວ່າ ດັ່ງນີ້ ໃນຄໍາວ່າ ທ່ານເຫມະກະທູນຖາມ ດັ່ງນີ້ ເປັນບົດສົນທິ ຯລຯ ຄໍາວ່າ ດັ່ງນີ້ ນີ້ ເປັນຄໍາເຊື່ອມບົດໜ້າກັບບົດຫຼັງເຂົ້ານໍາກັນ

ຄໍາວ່າ ທ່ານ ເປັນຄໍາກ່າວດ້ວຍຄວາມຮັກ ເປັນຄໍາກ່າວໂດຍຄວາມເຄົາລົບ ຄໍາວ່າ ທ່ານ ນີ້ ເປັນຄໍາກ່າວທີ່ມີຄວາມເຄົາລົບ ແລະຄວາມຢໍາເກງ

ຄຳວ່າ ເຫມະກະ ເປັນຊື່ຂອງພາມນັ້ນ ໆລໆ ຊື່ຮຽກສະເພາະ

ຄຳວ່າ ແຕ່ສາດສະໜາຂອງພຣະໂຄດົມ ອະທິບາຍວ່າ ແຕ່ສາດສະໜາຂອງພຣະໂຄດົມ ຄື ອື່ນຈາກສາດສະໜາຂອງພຣະໂຄດົມ ກ່ອນສາດສະໜາຂອງພຣະໂຄດົມ ກ່ອນກວ່າສາດສະໜາຂອງພຣະໂຄດົມ ໄດ້ແກ່ ກ່ອນກວ່າສາດສະໜາຂອງພຣະພຸດທະເຈົ້າ ສາດສະໜາຂອງພຣະຊິນນະເຈົ້າ ສາດສະໜາຂອງພຣະຕະຖາຄົດ ສາດສະໜາຂອງພຣະອະຣະຫັນ ລວມຄວາມວ່າ ແຕ່ສາດສະໜາຂອງພຣະໂຄດົມ

ຄຳວ່າ ເຫດນີ້ໄດ້ເປັນມາແລ້ວແນວນີ້ ຈັກເປັນແນວນີ້ ອະທິບາຍວ່າ ເລົ່າກັນວ່າວ່າ ເຫດນີ້ໄດ້ເປັນມາແລ້ວແນວນີ້ ເຫດນີ້ຈັກເປັນແນວນີ້ ລວມຄວາມວ່າ ເຫດນີ້ໄດ້ເປັນມາແລ້ວແນວນີ້ ຈັກເປັນແນວນີ້

ຄຳວ່າ ຄຳພະຍາກອນທັງໝົດນັ້ນເປັນຄຳທີ່ເຊື່ອສືບຕໍ່ກັນມາ ອະທິບາຍວ່າ ຄຳພະຍາກອນທັງໝົດນັ້ນເປັນຄຳທີ່ເຊື່ອສືບຕໍ່ກັນມາ ຄື ອາຈານເຫຼົ່ານັ້ນກ່າວທຳທີ່ຕົນບໍ່ຮູ້ດ້ວຍຕົນເອງ ທຳທີ່ບໍ່ໄດ້ປະຈັກແກ່ຕົນເອງ ໂດຍການເຊື່ອຜູ້ອື່ນວ່າ ທຳນີ້ເປັນດັ່ງນີ້ ໆ ໂດຍການເລົ່າລືໂດຍການຖືສືບ ໆ ກັນມາ ໂດຍການອ້າງຕຳລາ ໂດຍຕັກກະ ໂດຍການອະນຸມານ ໂດຍການຄິດຕອງ ຕາມແນວເຫດຜົນ ໂດຍເຂົ້າໄດ້ກັບທິດສະດີທີ່ຄິດໄວ້ແລ້ວ ລວມຄວາມວ່າ ຄຳພະຍາກອນທັງໝົດນັ້ນເປັນຄຳທີ່ເຊື່ອສືບຕໍ່ກັນມາ

ຄຳວ່າ ຄຳພະຍາກອນທັງໝົດນັ້ນ ມີແຕ່ຈະເຮັດໃຫ້ນຶກໄປຕ່າງ ໆ ອະທິບາຍວ່າ ຄຳພະຍາກອນທັງໝົດນັ້ນ ມີແຕ່ຈະເຮັດໃຫ້ນຶກໄປຕ່າງ ໆ ຄື ເຮັດໃຫ້ຄວາມວິຕົກຈະເລີນ ເຮັດໃຫ້ຄວາມດຳຣິຈະເລີນ ເຮັດໃຫ້ກາມວິຕົກຈະເລີນ ເຮັດໃຫ້ພະຍາບາດວິຕົກຈະເລີນ ເຮັດໃຫ້ວິຫິງສາວິຕົກຈະເລີນ ເຮັດໃຫ້ຄວາມວິຕົກເຖິງຍາດພີ່ນ້ອງຈະເລີນ ເຮັດໃຫ້ຄວາມວິຕົກເຖິງຊົນນະບົດຈະເລີນ ເຮັດໃຫ້ຄວາມວິຕົກເຖິງຄວາມບໍ່ຕາຍຈະເລີນ ເຮັດໃຫ້ຄວາມວິຕົກທີ່ປະກອບດ້ວຍຄວາມອີດູຈະເລີນ ເຮັດໃຫ້ຄວາມວິຕົກທີ່ປະກອບດ້ວຍລາບສັກກາຣະແລະຄວາມສັນເສີນຈະເລີນ ເຮັດໃຫ້ຄວາມວິຕົກທີ່ປະກອບດ້ວຍຄວາມປາຖະໜາບໍ່ໃຫ້ໃຜດູໝິ່ນຈະເລີນ ລວມຄວາມວ່າ ຄຳພະຍາກອນທັງໝົດນັ້ນມີແຕ່ຈະເຮັດໃຫ້ນຶກໄປຕ່າງ ໆ

ຄຳວ່າ ຂ້າພຣະອົງຈຶ່ງບໍ່ຍິນດີໃນຄຳພະຍາກອນນັ້ນ ອະທິບາຍວ່າ ຂ້າພຣະອົງຈຶ່ງບໍ່ຍິນດີ ຄື ບໍ່ພໍໃຈ ບໍ່ຍອມຮັບ ບໍ່ຢາກໄດ້ໃນຄຳພະຍາກອນນັ້ນ ລວມຄວາມວ່າ ຂ້າພຣະອົງຈຶ່ງບໍ່ຍິນດີໃນຄຳພະຍາກອນນັ້ນ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

(ທ່ານເຫມະກະທູນຖາມ ດັ່ງນີ້)

ກ່ອນແຕ່ສາດສະໜາຂອງພຣະໂຄດົມ
ອາຈານເຈົ້າລັດທິເຫຼົ່າໃດເຄີຍພະຍາກອນແກ່ຂ້າພຣະອົງວ່າ

ເຫດນີ້ໄດ້ເປັນມາແລ້ວແບບນີ້ ຈັກເປັນແບບນີ້
ຄຳພະຍາກອນທັງໝົດນັ້ນເປັນຄຳທີ່ເຊື່ອສືບຕໍ່ກັນມາ
ຄຳພະຍາກອນທັງໝົດນັ້ນມີແຕ່ຈະເຮັດໃຫ້ນຶກໄປຕ່າງ ໆ
ຂ້າພຣະອົງຈຶ່ງບໍ່ຍິນດີໃນຄຳພະຍາກອນນັ້ນ

[໕໔] (ທ່ານເຫມະກະທູນຖາມວ່າ)

ຂ້າແຕ່ພຣະມຸນີ ບຸກຄົນຮູ້ແຈ້ງທຳໃດແລ້ວ
ມີສະຕິ ທ່ຽວໄປຢູ່ ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້
ຂໍພຣະອົງໂຜດຕັດບອກທຳ (ນັ້ນ)
ທີ່ເປັນເຄື່ອງກຳຈັດຕັນຫາ ແກ່ຂ້າພຣະອົງເທີ້ນ (໔)

ຄຳວ່າ ພຣະອົງ ໃນຄຳວ່າ ຂໍພຣະອົງໂຜດຕັດບອກທຳ (ນັ້ນ) ຯລຯ ແກ່ຂ້າພຣະອົງ ເປັນຄຳທີ່ເຫມະກະມານົບຮຽກພຣະຜູ້ມີພຣະພາກເຈົ້າ

ຄຳວ່າ ທຳ ໃນຄຳວ່າ ໂຜດຕັດບອກທຳ ອະທິບາຍວ່າ ຂໍພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດພົມມະຈັນທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນ ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິ ບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກ ມີອົງ ໘ ນິບພານ ແລະປະຕິປະທາເຄື່ອງດຳເນີນໄປສູ່ນິບພານ ລວມຄວາມວ່າ ຂໍພຣະອົງໂຜດຕັດບອກທຳ (ນັ້ນ) ຯລຯ ແກ່ຂ້າພຣະອົງ

ຄຳວ່າ ຂ້າແຕ່ພຣະມຸນີ ຯລຯ ທຳທີ່ເປັນເຄື່ອງກຳຈັດຕັນຫາ ອະທິບາຍວ່າ

ຄຳວ່າ ຕັນຫາ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ ທຳທີ່ເປັນເຄື່ອງກຳຈັດຕັນຫາ ຄື ທຳເປັນເຄື່ອງລະຕັນຫາ ເຂົ້າໄປສະງົບຕັນຫາ ສະລັດຖິ້ມຕັນຫາ ຣະງັບຕັນຫາ ຄືອະມະຕະນິບພານ

ຄຳວ່າ ຂ້າແຕ່ພຣະມຸນີ ອະທິບາຍວ່າ ຍານທ່ານຮຽກວ່າ ໂມນະ ຯລຯ ພຣະອົງກ້າວລ່ວງກິເລດເຄື່ອງຂ້ອງ ແລະຕັນຫາເໝືອນຕາໜ່າງໄດ້ແລ້ວ ຊື່ວ່າມຸນີ ລວມຄວາມວ່າ ຂ້າແຕ່ພຣະມຸນີ ຯລຯ ທຳທີ່ເປັນເຄື່ອງກຳຈັດຕັນຫາ

ຄຳວ່າ ບຸກຄົນຮູ້ແຈ້ງທຳໃດແລ້ວ ມີສະຕິ ທ່ຽວໄປຢູ່ ອະທິບາຍວ່າ ບຸກຄົນຮູ້ແຈ້ງແລ້ວ ຄື ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວ ໄດ້ແກ່ ບຸກຄົນຮູ້ແຈ້ງແລ້ວ ຄື ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ທຳທັງປວງເປັນອະນັດຕາ ຯລຯ ບຸກຄົນຮູ້ແຈ້ງແລ້ວ ຄື ທຽບ

ຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດ ລ້ວນມີຄວາມດັບໄປເປັນທຳມະດາ

ຄຳວ່າ ມີສະຕິ ໄດ້ແກ່ ມີສະຕິດ້ວຍເຫດ ໔ ຢ່າງ ຄື (໑) ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ ຯລຯ ບຸກຄົນນັ້ນພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ມີສະຕິ

ຄຳວ່າ ທ່ຽວໄປຢູ່ ໄດ້ແກ່ ທ່ຽວໄປຢູ່ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ບຸກຄົນຮູ້ແຈ້ງທຳໃດແລ້ວ ມີສະຕິ ທ່ຽວໄປຢູ່

ຄຳວ່າ ເພິ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາໃນໂລກໄດ້ ອະທິບາຍວ່າ ຕັນຫາຊື່ວ່າ ວິສັດຕິກາ ຄື ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຄຳວ່າ ວິສັດຕິກາ ອະທິບາຍວ່າ ຕັນຫາຊື່ວ່າວິສັດຕິກາ ຍ້ອນມີຄວາມໝາຍວ່າແນວໃດ ຯລຯ ຊ່ານໄປ ຂະຫຍາຍໄປ ດັ່ງນັ້ນ ຈຶ່ງຊື່ວ່າ ວິສັດຕິກາ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ

ຄຳວ່າ ເພິ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາໃນໂລກໄດ້ ອະທິບາຍວ່າ ຜູ້ມີສະຕິເພິ່ງຂ້າມ ຄື ຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍຕັນຫານີ້ທີ່ຊື່ວ່າ ວິສັດຕິກາໃນໂລກນັ້ນເອງ ລວມຄວາມວ່າ ເພິ່ງຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາໃນໂລກໄດ້ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ຂ້າແຕ່ ພຣະມຸນີ ບຸກຄົນຮູ້ແຈ້ງທຳໃດແລ້ວ
ມີສະຕິ ທ່ຽວໄປຢູ່ ເພິ່ງຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້
ຂໍພຣະອົງໂຜດຕັດບອກທຳ (ນັ້ນ)
ທີ່ເປັນເຄື່ອງກຳຈັດຕັນຫາ ແກ່ຂ້າພຣະອົງເທີ້ນ

[໕໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ເຫມະກະ ນິບພານບົດອັນບໍ່ຜັນປ່ຽນ
ເປັນເຄື່ອງກຳຈັດຄວາມກຳໜັດດ້ວຍອຳນາດຄວາມພໍໃຈ
ໃນປິຍະຮູບທັງຫຼາຍທີ່ໄດ້ເຫັນ ໄດ້ຍິນໄດ້ຮັບຮູ້ແລະໄດ້ຮູ້ ໃນໂລກນີ້ (໓)

ຄຳວ່າ ທີ່ໄດ້ເຫັນ ໃນຄຳວ່າ ທີ່ໄດ້ເຫັນ ໄດ້ຍິນໄດ້ຮັບຮູ້ ແລະໄດ້ຮູ້ໃນໂລກນີ້ ໄດ້ແກ່ ໄດ້ເຫັນທາງຕາ

ຄຳວ່າ ໄດ້ຍິນ ໄດ້ແກ່ ໄດ້ຍິນທາງຫູ

ຄຳວ່າ ໄດ້ຮັບຮູ້ ໄດ້ແກ່ ໄດ້ຮັບຮູ້ ຄື ດົມກິ່ນທາງດັງ ຊີມຣົດທາງລີ້ນ ສຳຜັດທາງກາຍ

ຄຳວ່າ ແລະໄດ້ຮູ້ ໄດ້ແກ່ ໄດ້ຮູ້ (ທຳມາຣົມ) ທາງໃຈ ລວມຄວາມວ່າ ທີ່ໄດ້ເຫັນ ໄດ້ຍິນ ໄດ້ຮັບຮູ້ແລະໄດ້ຮູ້ ໃນໂລກນີ້

## ວ່າດ້ວຍປິຍະຣູບແລະສາຕະຣູບ

ຄຳວ່າ ເຫມະກະ ຯລຯ ໃນປິຍະຣູບທັງຫຼາຍ ອະທິບາຍວ່າ ກໍອັນໃດເປັນປິຍະຣູບ ເປັນສາຕະຣູບໃນໂລກ ຈັກຂຸ ເປັນປິຍະຣູບ ເປັນສາຕະຣູບໃນໂລກ ໂສຕະ (ປະສາດຫູ) ຯລຯ ຄານະ (ປະສາດດັງ) ຯລຯ ຊິວຫາ (ປະສາດລີ້ນ) ຯລຯ ກາຍ (ປະສາດກາຍ) ຯລຯ ມະໂນ ເປັນປິຍະຣູບ ເປັນສາຕະຣູບໃນໂລກ

ຣູບ ເປັນປິຍະຣູບ ເປັນສາຕະຣູບ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ ທຳມາຣົມ ເປັນປິຍະຣູບ ເປັນສາຕະຣູບໃນໂລກ ຈັກຂຸວິນຍານ ເປັນປິຍະຣູບ ເປັນສາຕະຣູບໃນໂລກ ໂສຕະວິນຍານ ຯລຯ ຄານະວິນຍານ ຯລຯ ຊິວຫາວິນຍານ ຯລຯ ກາຍະວິນຍານ ຯລຯ ມະໂນວິນຍານ ເປັນປິຍະຣູບ ເປັນສາຕະຣູບໃນໂລກ ຈັກຂຸສຳຜັດ ເປັນປິຍະຣູບ ເປັນສາຕະຣູບໃນໂລກ ໂສຕະສຳຜັດ ຯລຯ ຄານະສຳຜັດ ຯລຯ ຊິວຫາສຳຜັດ ຯລຯ ກາຍສຳຜັດ ຯລຯ ມະໂນສຳຜັດ ເປັນປິຍະຣູບ ເປັນສາຕະຣູບ ໃນໂລກເວທະນາທີ່ເກີດຈາກຈັກຂຸສຳຜັດ ເປັນປິຍະຣູບ ເປັນສາຕະຣູບໃນໂລກ ເວທະນາທີ່ເກີດຈາກໂສຕະສຳຜັດ ຯລຯ ເວທະນາທີ່ເກີດຈາກຄານະສຳຜັດ ຯລຯ ເວທະນາທີ່ເກີດຈາກຊິວຫາສຳຜັດ ຯລຯ ເວທະນາທີ່ເກີດຈາກກາຍະສຳຜັດ ຯລຯ ເວທະນາທີ່ເກີດຈາກມະໂນສຳຜັດ ເປັນປິຍະຣູບ ເປັນສາຕະຣູບ ໃນໂລກ

ຣູບສັນຍາ ເປັນປິຍະຣູບ ເປັນສາຕະຣູບໃນໂລກ ສັດທະສັນຍາ ຯລຯ ຄັນທະສັນຍາ ຯລຯ ຣະສະສັນຍາ ຯລຯ ໂຜດຖັບພະສັນຍາ ຯລຯ ທຳມະສັນຍາ ເປັນປິຍະຣູບ ເປັນສາຕະຣູບໃນໂລກ

ຣູບສັນເຈຕະນາ ເປັນປິຍະຣູບ ເປັນສາຕະຣູບໃນໂລກ ສັດທະສັນເຈຕະນາ ຯລຯ ຄັນທະສັນເຈຕະນາ ຯລຯ ຣະສະສັນເຈຕະນາ ຯລຯ ໂຜດຖັບພະສັນເຈຕະນາ ຯລຯ ທຳມະສັນເຈຕະນາ ເປັນປິຍະຣູບ ເປັນສາຕະຣູບ ໃນໂລກ

ຣູບຕັນຫາ ເປັນປິຍະຣູບ ເປັນສາຕະຣູບໃນໂລກ ສັດທະຕັນຫາ ຯລຯ ຄັນທະຕັນຫາ ຯລຯ ຣະສະຕັນຫາ ຯລຯ ໂຜດຖັບພະຕັນຫາ ຯລຯ ທຳມະຕັນຫາ ເປັນປິຍະຣູບ ເປັນສາຕະຣູບ ໃນໂລກ

ຣູບວິຕົກ ເປັນປິຍະຣູບ ເປັນສາຕະຣູບໃນໂລກ ສັດທະວິຕົກ ຯລຯ ຄັນທະວິຕົກ ຯລຯ ຣະສະວິຕົກ ຯລຯ ໂຜດຖັບພະວິຕົກ ຯລຯ ທຳມະວິຕົກ ເປັນປິຍະຣູບ ເປັນສາຕະຣູບໃນໂລກ ຣູບວິຈານເປັນປິຍະຣູບ ເປັນສາຕະຣູບໃນໂລກ ຯລຯ ສັດທະວິຈານ ຯລຯ ຄັນທະວິຈານ ຯລຯ ຣະສະວິຈານ ຯລຯ ໂຜດຖັບພະວິຈານ ຯລຯ ທຳມະວິຈານ ເປັນປິຍະຣູບ ເປັນສາຕະຣູບໃນໂລກ ລວມຄວາມວ່າ ໃນປິຍະຣູບທັງຫຼາຍ

ຄຳວ່າ ເຫມະກະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ຄວາມກຳໜັດດ້ວຍອຳນາດຄວາມພໍໃຈ ໃນຄຳວ່າ ເປັນເຄື່ອງກຳຈັດຄວາມກຳໜັດດ້ວຍອຳນາດຄວາມພໍໃຈ ອະທິບາຍວ່າ ຄວາມພໍໃຈດ້ວຍອຳນາດຄວາມຕ້ອງການ ຄວາມກຳໜັດດ້ວຍອຳນາດຄວາມຕ້ອງການ ຄວາມທະຍານຢາກດ້ວຍອຳນາດຄວາມຕ້ອງການ ຄວາມເຍື່ອໃຍດ້ວຍອຳນາດຄວາມຕ້ອງການ ຄວາມຮ້ອນຮົນດ້ວຍອຳນາດຄວາມຕ້ອງການ ຄວາມສະຍົບດ້ວຍອຳນາດຄວາມຕ້ອງການ ຄວາມຕິດໃຈດ້ວຍອຳນາດຄວາມຕ້ອງການ ຫ້ວງນ້ຳຄືຄວາມຕ້ອງການ ກິເລດເຄື່ອງປະກອບຄືຄວາມຕ້ອງການ ກິເລດເຄື່ອງຢຶດໝັ້ນຄືຄວາມຕ້ອງການ ກິເລດເຄື່ອງກັ້ນຈິດຄືຄວາມພໍໃຈດ້ວຍອຳນາດຄວາມຕ້ອງການໃນກາມທັງຫຼາຍ

ຄຳວ່າ ເປັນເຄື່ອງກຳຈັດຄວາມກຳໜັດດ້ວຍອຳນາດຄວາມພໍໃຈ ໄດ້ແກ່ ເປັນເຄື່ອງລະຄວາມກຳໜັດດ້ວຍອຳນາດຄວາມພໍໃຈ ເຂົ້າໄປສະງົບຄວາມກຳໜັດດ້ວຍອຳນາດຄວາມພໍໃຈ ສະລັດຖິ້ມຄວາມກຳໜັດດ້ວຍອຳນາດຄວາມພໍໃຈ ຣະງັບຄວາມກຳໜັດດ້ວຍອຳນາດຄວາມພໍໃຈ ຄື ອະມະຕະນິບພານ ລວມຄວາມວ່າ ເປັນເຄື່ອງກຳຈັດຄວາມກຳໜັດ ດ້ວຍອຳນາດຄວາມພໍໃຈ

ຄຳວ່າ ນິບພານບົດອັນບໍ່ຜັນປ່ຽນ ອະທິບາຍວ່າ ນິບພານບົດ (ທາງນິບພານ) ຄື ຕານະບົດ (ທາງປົກປ້ອງ) ເລນະບົດ (ທາງຫຼົບຫຼີກ) ປາຍະນະບົດ (ທາງໄປສູ່ຈຸດໝາຍ) ອະພະຍະບົດ (ທາງບໍ່ມີໄພ)

ຄຳວ່າ ອັນບໍ່ຜັນປ່ຽນ ໄດ້ແກ່ ທ່ຽງ ໝັ້ນຄົງ ແນ່ນອນ ມີຄວາມບໍ່ຜັນປ່ຽນໄປເປັນທຳມະດາ ລວມຄວາມວ່າ ນິບພານບົດອັນບໍ່ຜັນປ່ຽນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດຕອບວ່າ

ເຫມະກະ ນິບພານບົດອັນບໍ່ຜັນປ່ຽນ
ເປັນເຄື່ອງກຳຈັດຄວາມກຳໜັດດ້ວຍອຳນາດຄວາມພໍໃຈ
ໃນປິຍະຣູບທັງຫຼາຍທີ່ໄດ້ເຫັນ ໄດ້ຍິນໄດ້ຮັບຮູ້ແລະໄດ້ຮູ້ ໃນໂລກນີ້

[໕໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ຊົນເຫຼົ່າໃດຜູ້ມີສະຕິ ຮູ້ນິບພານນັ້ນແລ້ວ
ເຫັນທຳ ດັບກິເລດໄດ້ແລ້ວ
ຊົນເຫຼົ່ານັ້ນ ເປັນຜູ້ສະງົບທຸກເມື່ອ
ຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້ແລ້ວ (໔)

ຄຳວ່າ ນັ້ນ ໃນຄຳວ່າ ຊົນເຫຼົ່າໃດຜູ້ມີສະຕິ ຮູ້ນິບພານນັ້ນແລ້ວ ໄດ້ແກ່ ອະມະຕະນິບພານ ອັນເປັນທຳຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ

ຄຳວ່າ ຮູ້ແລ້ວ ໄດ້ແກ່ ຮູ້ແລ້ວ ຄື ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ຊັດແຈ້ງແລ້ວ ໄດ້ແກ່ ຮູ້ແລ້ວ ຄື ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ຊັດແຈ້ງແລ້ວວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ທຳທັງປວງເປັນອະນັດຕາ ຯລຯ ຮູ້ແລ້ວ ຊາບແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ຊັດແຈ້ງແລ້ວວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ຄຳວ່າ ເຫຼົ່າໃດ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ຜູ້ມີສະຕິ ໄດ້ແກ່ ຜູ້ມີສະຕິດ້ວຍເຫດ ໔ ຢ່າງ ຄື (໑) ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ ຯລຯ ພຣະອະຣະຫັນຕະຂີນາສົບເຫຼົ່ານັ້ນ ພຣະຜູ້ມີພຣະພາກເຈົ້າ ຕັດຮຽກວ່າ ຜູ້ມີສະຕິ ລວມຄວາມວ່າ ຊົນເຫຼົ່າໃດຜູ້ມີສະຕິ ຮູ້ນິບພານນັ້ນແລ້ວ

ຄຳວ່າ ເຫັນທຳ ໃນຄຳວ່າ ເຫັນທຳ ດັບກິເລດໄດ້ແລ້ວ ອະທິບາຍວ່າ ຜູ້ເຫັນທຳ ຄື ຜູ້ຮູ້ທຳ ຜູ້ທຽບຄຽງທຳ ຜູ້ພິຈາລະນາທຳ ຜູ້ຮູ້ແຈ້ງທຳ ຜູ້ເຫັນແຈ້ງທຳໄດ້ແກ່ ຜູ້ເຫັນທຳ ຄື ຜູ້ຮູ້ທຳ ຜູ້ທຽບຄຽງທຳ ຜູ້ພິຈາລະນາທຳ ຜູ້ຮູ້ແຈ້ງທຳ ຜູ້ເຫັນແຈ້ງທຳວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ຄຳວ່າ ດັບກິເລດໄດ້ແລ້ວ ອະທິບາຍວ່າ ຊື່ວ່າດັບກິເລດໄດ້ແລ້ວ ຍ້ອນເປັນຜູ້ເຮັດໃຫ້ຣາຄະດັບແລ້ວ ຊື່ວ່າດັບກິເລດໄດ້ແລ້ວ ຍ້ອນເປັນຜູ້ເຮັດໃຫ້ໂທສະດັບແລ້ວ ຊື່ວ່າດັບກິເລດໄດ້ແລ້ວ ຍ້ອນເປັນຜູ້ເຮັດໃຫ້ໂມຫະດັບແລ້ວ ຊື່ວ່າດັບກິເລດໄດ້ແລ້ວ ຍ້ອນເປັນຜູ້ເຮັດໃຫ້ໂກທະ ຯລຯ ອຸປະນາຫະ ຯລຯ ອະກຸສະລາພິສັງຂານທຸກປະເພດດັບແລ້ວ ລວມຄວາມວ່າ ເຫັນທຳ ດັບກິເລດໄດ້ແລ້ວ

ຄຳວ່າ ເປັນຜູ້ສະງົບ ໃນຄຳວ່າ ຊົນເຫຼົ່ານັ້ນ ເປັນຜູ້ສະງົບທຸກເມື່ອ ອະທິບາຍວ່າ ຊື່ວ່າເປັນຜູ້ສະງົບ ຍ້ອນສະງົບຣາຄະ ຊື່ວ່າເປັນຜູ້ສະງົບ ຍ້ອນສະງົບໂທສະ ຊື່ວ່າເປັນຜູ້ສະງົບຍ້ອນສະງົບ ໂມຫະ ຄື ສະງົບແລ້ວ ເຂົ້າໄປສະງົບແລ້ວ ສະງົບເຢັນແລ້ວ ດັບໄດ້ແລ້ວ ຣະງັບໄດ້ແລ້ວ ຍ້ອນສະງົບ ຣະງັບ ສະງົບເຢັນ ເຜົາ ດັບ ປາສະຈາກ ສະງົບຣະງັບໂກທະ ອຸປະນາຫະ ຯລຯ ອະກຸສະລາພິສັງຂານທຸກປະເພດແລ້ວ ລວມຄວາມວ່າ ເປັນຜູ້ສະງົບ

ຄຳວ່າ ເຫຼົ່ານັ້ນ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ທຸກເມື່ອ ອະທິບາຍວ່າ ທຸກເມື່ອ ຄື ໃນການທຸກເມື່ອ ຕະຫຼອດການທັງປວງ ຕະຫຼອດການເປັນນິດ ຕະຫຼອດການຍັ່ງຢືນ ຕະຫຼອດການຕໍ່ເນື່ອງກັນ ຕະຫຼອດການສືບເນື່ອງກັນ ຕະຫຼອດການຕິດຕໍ່ກັນ ຕະຫຼອດການເປັນລຳດັບ ຕະຫຼອດການຕິດຕໍ່ກັນເໝືອນຣະລອກຄື້ນ ຕະຫຼອດການເປັນໄປຕໍ່ເນື່ອງບໍ່ຂາດສາຍ ຕະຫຼອດການສືບຕໍ່ກັນກະຊັ້ນຊິດ ຕະຫຼອດການກ່ອນພັດ ຫຼັງພັດ ຕະຫຼອດປະຖົມຍາມ ມັດຊິມະຍາມ ປັດສິມຍາມ ຕະຫຼອດຂ້າງແຮມ ຂ້າງຂຶ້ນ

ຕະຫຼອດລະດູຝົນ ລະດູໜາວ ລະດູຮ້ອນ ຕະຫຼອດປະຖົມໄວ ມັດຊິມະໄວ ປັດສິມໄວ ລວມຄວາມວ່າ ຊົນເຫຼົ່ານັ້ນ ເປັນຜູ້ສະງົບທຸກເມື່ອ

ຄຳວ່າ ຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້ແລ້ວ ອະທິບາຍວ່າ ຕັນຫາ ຕັດຮຽກວ່າວິສັດຕິກາ ຄື ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄືໂລພະ

ຄຳວ່າ ວິສັດຕິກາ ອະທິບາຍວ່າ ຕັນຫາຊື່ວ່າວິສັດຕິກາ ຍ້ອນມີຄວາມໝາຍວ່າແນວໃດ ຯລຯ ຊ່ານໄປ ຂະຫຍາຍໄປ ດັ່ງນັ້ນ ຈຶ່ງຊື່ວ່າວິສັດຕິກາ

ຄຳວ່າ ໃນໂລກ ໄດ້ແກ່ ໃນອະບາຍໂລກ ຯລຯ ອາຍະຕະນະໂລກ

ຄຳວ່າ ເປັນຜູ້ຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາໃນໂລກໄດ້ແລ້ວ ອະທິບາຍວ່າ ຕັນຫາທີ່ຊື່ວ່າວິສັດຕິກາໃນໂລກ ພຣະອະຣະຫັນຕະຂີນາສົບ ເປັນຜູ້ຂ້າມ ຄື ຂ້າມຜ່ານ ຂ້າມພົ້ນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນຕັນຫາຊື່ວ່າ ວິສັດຕິກາໃນໂລກແລ້ວ ລວມຄວາມວ່າ ເປັນຜູ້ຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້ແລ້ວ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ຊົນເຫຼົ່າໃດຜູ້ມີສະຕິ ຮູ້ນິບພານນັ້ນແລ້ວ
ເຫັນທຳ ດັບກິເລດໄດ້ແລ້ວ
ຊົນເຫຼົ່ານັ້ນ ເປັນຜູ້ສະງົບທຸກເມື່ອ
ຂ້າມຕັນຫາທີ່ຊື່ວ່າວິສັດຕິກາໃນໂລກໄດ້ແລ້ວ

ພ້ອມກັບການຈົບຄາຖາ ຯລຯ ເຫມະກະມານົບ ຯລຯ ໂດຍປະກາດວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ

**ເຫມະກະມານະວະປັນຫານິດເທດທີ ໗ ຈົບ**

## ໘. ໂຕເທີຍຍະມານະວະປັນຫານິດເທດ

## ວ່າດ້ວຍປັນຫາຂອງໂຕເທີຍຍະມານົບ

[໕໗] (ທ່ານໂຕເທີຍຍະທູນຖາມ ດັ່ງນີ້)

ກາມທັງຫຼາຍບໍ່ຢູ່ໃນບຸກຄົນໃດ
ຕັນຫາບໍ່ມີແກ່ບຸກຄົນໃດ
ແລະບຸກຄົນໃດຂ້າມຄວາມສົງໄສໄດ້ແລ້ວ
ວິໂມກຂອງບຸກຄົນນັ້ນເປັນເຊັ່ນໃດ (໑)

ຄຳວ່າ ກາມທັງຫຼາຍບໍ່ຢູ່ໃນບຸກຄົນໃດ ອະທິບາຍວ່າ ກາມທັງຫຼາຍຍ່ອມບໍ່ຢູ່ ຄື ບໍ່ຢູ່ຮ່ວມ ບໍ່ຢູ່ອາໄສ ບໍ່ຢູ່ຄອງ ໃນບຸກຄົນໃດ ລວມຄວາມວ່າ ກາມທັງຫຼາຍບໍ່ຢູ່ໃນບຸກຄົນໃດ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານໂຕເທີຍຍະທູນຖາມ ດັ່ງນີ້ ເປັນບົດສົນທິ ໆລໆ ຄຳວ່າ ດັ່ງນີ້ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ທ່ານ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາລົບ ຄຳວ່າ ທ່ານ ນີ້ ເປັນຄຳກ່າວທີ່ມີຄວາມເຄົາລົບ ແລະຄວາມຢຳເກງ

ຄຳວ່າ ໂຕເທີຍຍະ ເປັນຊື່ຂອງພາມນັ້ນ ໆລໆ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານ ໂຕເທີຍຍະທູນຖາມ ດັ່ງນີ້

ຄຳວ່າ ຕັນຫາບໍ່ມີແກ່ບຸກຄົນໃດ ອະທິບາຍວ່າ ຕັນຫາບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ ແກ່ບຸກຄົນໃດ ໄດ້ແກ່ ຕັນຫາອັນຜູ້ໃດລະໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດ ໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ຕັນຫາບໍ່ມີແກ່ບຸກຄົນໃດ

ຄຳວ່າ ແລະບຸກຄົນໃດຂ້າມຄວາມສົງໄສໄດ້ແລ້ວ ອະທິບາຍວ່າ ຜູ້ໃດຂ້າມ ຄື ຂ້າມຂຶ້ນ ຂ້າມພົ້ນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນຄວາມສົງໄສໄດ້ແລ້ວ ລວມຄວາມວ່າ ແລະບຸກຄົນໃດ ຂ້າມຄວາມສົງໄສໄດ້ແລ້ວ

ຄຳວ່າ ວິໂມກຂອງບຸກຄົນນັ້ນເປັນເຊັ່ນໃດ ອະທິບາຍວ່າ ພາມທູນຖາມວິໂມກວ່າ ວິ ໂມກຂອງເຂົາເປັນເຊັ່ນໃດ ຄື ມີສັນຖານແນວໃດ ມີປະການແນວໃດ ປຽບໄດ້ກັບອັນໃດ ທີ່ບຸກຄົນ ເພິ່ງປາຖະໜາ ລວມຄວາມວ່າ ວິໂມກຂອງບຸກຄົນນັ້ນເປັນເຊັ່ນໃດ ດ້ວຍເຫດນັ້ນ ພາມນັ້ນຈຶ່ງ ຂາບທູນວ່າ

(ທ່ານໂຕເທີຍຍະທູນຖາມ ດັ່ງນີ້)

ກາມທັງຫຼາຍບໍ່ຢູ່ໃນບຸກຄົນໃດ
ຕັນຫາບໍ່ມີແກ່ບຸກຄົນໃດ
ແລະບຸກຄົນໃດຂ້າມຄວາມສົງໄສໄດ້ແລ້ວ
ວິໂມກຂອງບຸກຄົນນັ້ນເປັນເຊັ່ນໃດ

[໕໗] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂຕເທີຍຍະ)

ກາມທັງຫຼາຍບໍ່ຢູ່ໃນບຸກຄົນໃດ
ຕັນຫາບໍ່ມີແກ່ບຸກຄົນໃດ
ແລະບຸກຄົນໃດຂ້າມຄວາມສົງໄສໄດ້ແລ້ວ
ວິໂມກອື່ນຂອງບຸກຄົນນັ້ນຍ່ອມບໍ່ມີ (໔)

ຄໍາວ່າ ໃດ ໃນຄໍາວ່າ ກາມທັງຫຼາຍບໍ່ຢູ່ໃນບຸກຄົນໃດ ໄດ້ແກ່ ໃນບຸກຄົນໃດ ຄື ພຣະອະຣະຫັນຕະຂີນາສົບ

ຄໍາວ່າ ກາມ ໄດ້ແກ່ ກາມ ໒ ຢ່າງແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ເຫຼົ່ານີ້ຮຽກວ່າ ກິເລດກາມ

ຄໍາວ່າ ບໍ່ຢູ່ ອະທິບາຍວ່າ ກາມທັງຫຼາຍຍ່ອມບໍ່ຢູ່ ຄື ບໍ່ຢູ່ຮ່ວມ ບໍ່ຢູ່ອາໄສ ບໍ່ຢູ່ຄອງໃນບຸກຄົນໃດ ລວມຄວາມວ່າ ກາມທັງຫຼາຍບໍ່ຢູ່ໃນບຸກຄົນໃດ

ຄໍາວ່າ ໂຕເທີຍຍະ ໃນຄໍາວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂຕເທີຍຍະ ເປັນຄໍາທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄໍາວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄໍາກ່າວໂດຍຄວາມເຄົາລົບ ຯລຯ ຄໍາວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂຕເທີຍຍະ

ຄໍາວ່າ ຕັນຫາ ໃນຄໍາວ່າ ຕັນຫາບໍ່ມີແກ່ບຸກຄົນໃດ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທໍາມະຕັນຫາ

ຄໍາວ່າ ບຸກຄົນໃດ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄໍາວ່າ ຕັນຫາບໍ່ມີແກ່ບຸກຄົນໃດ ອະທິບາຍວ່າ ຕັນຫາບໍ່ມີ ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ແກ່ບຸກຄົນໃດ ໄດ້ແກ່ ຕັນຫາອັນບຸກຄົນໃດລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ຕັນຫາບໍ່ມີແກ່ບຸກຄົນໃດ

ຄໍາວ່າ ແລະບຸກຄົນໃດຂ້າມຄວາມສົງໄສໄດ້ແລ້ວ ອະທິບາຍວ່າ ວິຈິກິດສາ ຕັດຮຽກວ່າ ຄວາມສົງໄສ ໄດ້ແກ່ ຄວາມສົງໄສໃນທຸກ ຯລຯ ຄວາມຫວາດຫວັ່ນແຫ່ງຈິດ ຄວາມຕິດຂັດໃນໃຈ

ຄໍາວ່າ ບຸກຄົນໃດ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄໍາວ່າ ແລະບຸກຄົນໃດຂ້າມຄວາມສົງໄສໄດ້ແລ້ວ ອະທິບາຍວ່າ ບຸກຄົນໃດຂ້າມ ຄື ຂ້າມຂຶ້ນ ຂ້າມພົ້ນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນຄວາມສົງໄສໄດ້ແລ້ວ ລວມຄວາມວ່າ ແລະບຸກຄົນໃດຂ້າມຄວາມສົງໄສໄດ້ແລ້ວ

ຄໍາວ່າ ວິໂມກອື່ນຂອງບຸກຄົນນັ້ນຍ່ອມບໍ່ມີ ອະທິບາຍວ່າ ບຸກຄົນຜູ້ຫຼຸດພົ້ນແລ້ວນັ້ນ ເພິ່ງຫຼຸດພົ້ນດ້ວຍວິໂມກໃດ ວິໂມກອື່ນຈາກນັ້ນ ຂອງບຸກຄົນນັ້ນຍ່ອມບໍ່ມີ (ຍ້ອນ) ບຸກຄົນ ນັ້ນໄດ້ເຮັດກິດທີ່ຄວນເຮັດດ້ວຍວິໂມກສໍາເລັດແລ້ວ ລວມຄວາມວ່າ ວິໂມກອື່ນຂອງບຸກຄົນນັ້ນຍ່ອມບໍ່ມີດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂຕເທີຍຍະ)

ກາມທັງຫຼາຍບໍ່ຢູ່ໃນບຸກຄົນໃດ
ຕັນຫາບໍ່ມີແກ່ບຸກຄົນໃດ
ແລະບຸກຄົນໃດຂ້າມຄວາມສົງໄສໄດ້ແລ້ວ
ວິໂມກອື່ນຂອງບຸກຄົນນັ້ນຍ່ອມບໍ່ມີ

[໕໙] (ທ່ານໂຕເທີຍຍະທູນຖາມວ່າ)

ບຸກຄົນນັ້ນເປັນຜູ້ບໍ່ມີຄວາມຫວັງ ຫຼືວ່າຍັງຫວັງຢູ່
ບຸກຄົນນັ້ນເປັນຜູ້ມີປັນຍາ ຫຼືວ່າຍັງມີຄວາມດຳຣິດ້ວຍປັນຍາ
ຂ້າແຕ່ພຣະອົງຜູ້ສັກກະ ຂ້າພຣະອົງຈະເພິ່ງຮູ້ຈັກພຣະມຸນີໄດ້ແນວໃດ
ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ
ຂໍພຣະອົງໂຜດຕັດບອກບັນຫານັ້ນ
ແກ່ຂ້າພຣະອົງໃຫ້ຊັດແຈ້ງດ້ວຍເທີ້ນ (໓)

ຄຳວ່າ ບຸກຄົນນັ້ນເປັນຜູ້ບໍ່ມີຄວາມຫວັງ ຫຼື ວ່າຍັງຫວັງຢູ່ ອະທິບາຍວ່າ ບຸກຄົນນັ້ນບໍ່ມີຕັນຫາ ຫຼືວ່າ ຍັງມີຕັນຫາຢູ່ ຄື ຫວັງ ຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງໃນຮູບ ฯລฯ ສຽງ ฯລฯ ກິ່ນ ฯລฯ ຣົດ ฯລฯ ໂຜດຖັບພະ ฯລฯ ຕະກູນ ฯລฯ ຄະນະ ฯລฯ ອາວາດ ฯລฯ ລາບ ฯລฯ ຍົດ ฯລฯ ສັນເສີນ ฯລฯ ສຸກ ฯລฯ ຈີວອນ ฯລฯ ບິນທະບາດ ฯລฯ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ฯລฯ ກາມທາດ ฯລฯ ຮູບທາດ ฯລฯ ອະຮູບທາດ ฯລฯ ກາມະພົບ ฯລฯ ຮູບພົບ ฯລฯ ອະຮູບພົບ ฯລฯ ສັນຍາພົບ ฯລฯ ອະສັນຍາພົບ ฯລฯ ເນວະສັນຍານາສັນຍາພົບ ฯລฯ ເອກະໂວກາຣະພົບ ฯລฯ ຈະຕຸໂວກາຣະພົບ ฯລฯ ປັນຈະໂວກາຣະພົບ ฯລฯ ອະດີດ ฯລฯ ອະນາຄົດ ฯລฯ ປັດຈຸບັນ ฯລฯ ຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ໄດ້ຮັບຮູ້ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ລວມຄວາມວ່າ ບຸກຄົນນັ້ນເປັນຜູ້ບໍ່ມີຄວາມຫວັງ ຫຼື ວ່າຍັງຫວັງຢູ່

ຄຳວ່າ ບຸກຄົນນັ້ນເປັນຜູ້ມີປັນຍາ ໃນຄຳວ່າ ບຸກຄົນນັ້ນເປັນຜູ້ມີປັນຍາ ຫຼື ວ່າຍັງມີຄວາມດຳຣິດ້ວຍປັນຍາ ໄດ້ແກ່ ບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຮູ້ ມີຍານ ມີປັນຍາຊັດແຈ້ງ ມີປັນຍາເຄື່ອງທຳລາຍກິເລດ

ຄຳວ່າ ຫຼືວ່າຍັງມີຄວາມດຳຣິດ້ວຍປັນຍາ ອະທິບາຍວ່າ ຫຼືວ່າ ຍັງດຳຣິເຖິງຕັນຫາຫຼື ທິດຖິ ຄື ໃຫ້ຄວາມດຳຣິເຖິງຕັນຫາຫຼືທິດຖິເກີດ ໃຫ້ເກີດຂຶ້ນ ໃຫ້ບັງເກີດ ໃຫ້ບັງເກີດຂຶ້ນດ້ວຍຍານໃນສະມາບັດ ໘ ຍານໃນອະພິນຍາ ໕ ຫຼື ມິດສາຍານ ລວມຄວາມວ່າ ບຸກຄົນນັ້ນເປັນຜູ້ມີປັນຍາ ຫຼືວ່າຍັງມີຄວາມດຳຣິດ້ວຍປັນຍາ

## ວ່າດ້ວຍພຣະຜູ້ມີພຣະພາກເຈົ້າຊື່ວ່າຜູ້ສັກກະ

ຄຳວ່າ ຂ້າແຕ່ພຣະອົງຜູ້ສັກກະ ໃນຄຳວ່າ ຂ້າແຕ່ພຣະອົງຜູ້ສັກກະ ຂ້າພຣະອົງຈະເພິ່ງຮູ້ຈັກພຣະມຸນີໄດ້ແນວໃດ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຜູ້ສັກກະສະເດັດອອກບວດຈາກສາກະຍະຕະກູນ ຈຶ່ງຊື່ວ່າຜູ້ສັກກະ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງມັ່ງຄັ່ງ ຊົງມີຊັບຫຼາຍ ມີຊັບ ຈຶ່ງຊື່ວ່າຜູ້ສັກກະ ພຣະອົງຊົງມີຊັບເຫຼົ່ານີ້ ຄື ຊັບຄືສັດທາ ຊັບຄືສີນ ຊັບຄືຫິຣິ ຊັບຄືໂອດຕັບປະ ຊັບຄືສຸຕະ ຊັບຄືຈາຄະ ຊັບຄືປັນຍາ ຊັບຄືສະຕິປັດຖານ ຊັບຄືສຳມັບປະທານ ຊັບຄືອິດທິບາດ ຊັບຄືອິນຊີ ຊັບຄືພະລະ ຊັບຄືໂພດຊົງ ຊັບຄືມັກ ຊັບຄືຜົນ ຊັບຄືນິບພານ ພຣະຜູ້ມີພຣະພາກເຈົ້າຊົງມັ່ງຄັ່ງ ມີຊັບຫຼາຍ ມີຊັບດ້ວຍຊັບທີ່ເປັນຣັດຕະນະຫຼາຍຢ່າງເຫຼົ່ານີ້ ຈຶ່ງຊື່ວ່າຜູ້ສັກກະ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງສາມາດ ຄື ຊົງອົງອາດ ອາດຫານ ມີຄວາມສາມາດ ກ້າ ກ້າຫານ ກ້າວໜ້າ ບໍ່ຢ້ານ ບໍ່ຫວາດສຽວ ບໍ່ສະດຸ້ງ ບໍ່ໜີ ຊົງລະໄພແລະຄວາມຢ້ານກົວໄດ້ແລ້ວ ໝົດຄວາມຂົນພອງສະຫຍອງເກົ້າ ຈຶ່ງຊື່ວ່າຜູ້ສັກກະ

ຄຳວ່າ ຂ້າແຕ່ພຣະອົງຜູ້ສັກກະ ຂ້າພຣະອົງຈະເພິ່ງຮູ້ຈັກພຣະມຸນີໄດ້ແນວໃດ ອະທິບາຍວ່າ ຂ້າແຕ່ພຣະອົງຜູ້ສັກກະ ຂ້າພຣະອົງເພິ່ງຮູ້ ຄື ເພິ່ງຮູ້ທົ່ວ ຮູ້ຊັດແຈ້ງ ຮູ້ສະເພາະ ແທງຕະຫຼອດ ພຣະມຸນີໄດ້ແນວໃດ ລວມຄວາມວ່າ ຂ້າແຕ່ພຣະອົງຜູ້ສັກກະ ຂ້າພຣະອົງຈະເພິ່ງຮູ້ຈັກພຣະມຸນີໄດ້ແນວໃດ

ຄຳວ່າ ນັ້ນ ໃນຄຳວ່າ ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ ຂໍພຣະອົງໂຜດຕັດບອກບັນຫານັ້ນ ແກ່ຂ້າພຣະອົງໃຫ້ຊັດແຈ້ງດ້ວຍເທີ້ນ ອະທິບາຍວ່າ ບັນຫາທີ່ຂ້າພຣະອົງ ທູນຖາມທີ່ຂ້າພຣະອົງທູນຂໍ ທີ່ຂ້າພຣະອົງທູນອັນເຊີນ ທີ່ຂ້າພຣະອົງທູນໃຫ້ຊົງປະກາດ

ຄຳວ່າ ຂໍພຣະອົງໂຜດຕັດບອກ (ບັນຫານັ້ນ) ໃຫ້ຊັດແຈ້ງ ອະທິບາຍວ່າ ຂໍພຣະອົງໂຜດຕັດບອກ ຄື ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດ

ຄຳວ່າ ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ ອະທິບາຍວ່າ ພຣະສັບພັນຍຸຕະຍານ ຕັດຮຽກວ່າ ສະມັນຕະຈັກຂຸ ຯລຯ ຍ້ອນເຫດນັ້ນ ພຣະຕະຖາຄົດ ຊື່ວ່າຜູ້ມີສະມັນຕະຈັກຂຸ ລວມຄວາມວ່າ ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ ຂໍພຣະອົງໂຜດຕັດບອກບັນຫານັ້ນແກ່ຂ້າພຣະອົງໃຫ້ຊັດແຈ້ງດ້ວຍເທີ້ນ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ບຸກຄົນນັ້ນເປັນຜູ້ບໍ່ມີຄວາມຫວັງ ຫຼືວ່າຍັງຫວັງຢູ່
ບຸກຄົນນັ້ນເປັນຜູ້ມີປັນຍາ ຫຼືວ່າຍັງມີຄວາມດຳຣິດ້ວຍປັນຍາ

ຂ້າແຕ່ພຣະອົງຜູ້ສັກກະ ຂ້າພຣະອົງຈະເພິ່ງຮູ້ຈັກພຣະມຸນີໄດ້ແນວໃດ
ຂ້າແຕ່ພຣະອົງຜູ້ມີສະມັນຕະຈັກຂຸ
ຂໍພຣະອົງໂຜດຕັດບອກບັນຫານັ້ນ
ແກ່ຂ້າພຣະອົງໃຫ້ຊັດແຈ້ງດ້ວຍເທີ້ນ

[໓໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ບຸກຄົນນັ້ນເປັນຜູ້ບໍ່ມີຄວາມຫວັງ ທັງບໍ່ຫວັງ
ບຸກຄົນນັ້ນເປັນຜູ້ມີປັນຍາ ແຕ່ບໍ່ມີຄວາມດຳຣິດ້ວຍປັນຍາ
ໂຕເທີຍຍະ ທ່ານຈົ່ງຮູ້ຈັກບຸກຄົນຜູ້ບໍ່ມີເຄື່ອງກັງວົນ
ຜູ້ບໍ່ຂ້ອງໃນກາມ ແລະພົບວ່າເປັນມຸນີ ແນວນີ້ (໔)

ຄຳວ່າ ບຸກຄົນນັ້ນເປັນຜູ້ບໍ່ມີຄວາມຫວັງ ທັງບໍ່ຫວັງ ອະທິບາຍວ່າ ບຸກຄົນນັ້ນບໍ່ມີ ຕັນຫາ ທັງບໍ່ມີຕັນຫາ ບໍ່ຫວັງ ຄື ບໍ່ຕ້ອງການ ບໍ່ຍິນດີ ບໍ່ປາຖະໜາ ບໍ່ມຸ້ງໝາຍ ບໍ່ມຸ້ງຫວັງໃນຮູບ ຯລຯ ໃນສຽງ ຯລຯ ໃນກິ່ນ ຯລຯ ໃນຮູບທີ່ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ໄດ້ຮັບຮູ້ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ລວມຄວາມວ່າ ບຸກຄົນນັ້ນເປັນຜູ້ບໍ່ມີຄວາມຫວັງ ທັງບໍ່ຫວັງ

ຄຳວ່າ ຜູ້ມີປັນຍາ ໃນຄຳວ່າ ບຸກຄົນນັ້ນເປັນຜູ້ມີປັນຍາ ແຕ່ບໍ່ມີຄວາມດຳຣິດ້ວຍປັນຍາ ໄດ້ແກ່ ບັນດິດ ມີປັນຍາ ຄື ມີປັນຍາເຄື່ອງຕັດສະຮູ້ ມີຍານ ມີປັນຍາຊັດແຈ້ງ ມີປັນຍາເຄື່ອງທຳລາຍກິເລດ

ຄຳວ່າ ແຕ່ບໍ່ມີຄວາມດຳຣິດ້ວຍປັນຍາ ອະທິບາຍວ່າ ບໍ່ດຳຣິເຖິງຕັນຫາຫຼືທິດຖິ ດ້ວຍຍານໃນສະມາບັດ ໗ ອະພິນຍາ ໕ ຫຼື ມິດສາຍານ ຄື ບໍ່ໃຫ້ຄວາມດຳຣິເຖິງຕັນຫາຫຼືທິດຖິເກີດ ບໍ່ໃຫ້ເກີດຂຶ້ນ ບໍ່ໃຫ້ບັງເກີດ ບໍ່ໃຫ້ບັງເກີດຂຶ້ນ ລວມຄວາມວ່າ ບຸກຄົນນັ້ນເປັນຜູ້ມີປັນຍາ ແຕ່ບໍ່ມີຄວາມດຳຣິດ້ວຍປັນຍາ

ຄຳວ່າ ໂຕເທີຍຍະ ທ່ານຈົ່ງຮູ້ຈັກ ຯລຯ ວ່າເປັນມຸນີ ແນວນີ້ ອະທິບາຍວ່າ

ຄຳວ່າ ມຸນີ ອະທິບາຍວ່າ ຍານທ່ານຮຽກວ່າ ໂມນະ ຯລຯ ບຸກຄົນກ້າວລ່ວງກິເລດເຄື່ອງຂ້ອງ ແລະຕັນຫາເໝືອນຕາໜ່າງໄດ້ແລ້ວ ຊື່ວ່າມຸນີ

ຄຳວ່າ ໂຕເທີຍຍະ ທ່ານຈົ່ງຮູ້ຈັກ ຯລຯ ວ່າເປັນມຸນີ ແນວນີ້ ອະທິບາຍວ່າ ໂຕເທີຍຍະ ທ່ານຈົ່ງຮູ້ ຄື ຈົງຮູ້ສະເພາະ ຮູ້ຊັດແຈ້ງ ແທງຕະຫຼອດ ວ່າເປັນມຸນີ ແນວນີ້ ລວມຄວາມວ່າ ໂຕເທີຍຍະ ທ່ານຈົ່ງຮູ້ຈັກ ຯລຯ ວ່າເປັນມຸນີ ແນວນີ້

ຄຳວ່າ ເຄື່ອງກັງວົນ ໃນຄຳວ່າ ບຸກຄົນຜູ້ບໍ່ມີເຄື່ອງກັງວົນ ຜູ້ບໍ່ຂ້ອງໃນກາມແລະພົບ ໄດ້ແກ່ ເຄື່ອງກັງວົນຄືຣາຄະ ເຄື່ອງກັງວົນຄືໂທສະ ເຄື່ອງກັງວົນຄືໂມຫະ ເຄື່ອງກັງວົນຄືມານະ ເຄື່ອງກັງວົນຄືທິດຖິ ເຄື່ອງກັງວົນຄືກິເລດ ເຄື່ອງກັງວົນຄືທຸດຈະຣິດ ເຄື່ອງກັງວົນເຫຼົ່ານີ້ຜູ້ໃດລະ

ໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ຜູ້ນັ້ນຕັດຮຽກວ່າ ບຸກຄົນຜູ້ບໍ່ມີເຄື່ອງກັງວົນ

ຄຳວ່າ ໃນກາມ ແລະພົບ ອະທິບາຍວ່າ

ຄຳວ່າ ກາມ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ຯລຯ ເຫຼົ່ານີ້ຮຽກວ່າ ກິເລດກາມ

ຄຳວ່າ ພົບ ໄດ້ແກ່ ພົບ ໒ ຄື (໑) ກຳພົບ (໒) ພົບໃໝ່ອັນມີໃນປະຕິສົນທິ ຯລຯ ນີ້ຊື່ວ່າພົບໃໝ່ອັນມີໃນປະຕິສົນທິ

ຄຳວ່າ ບຸກຄົນຜູ້ບໍ່ມີເຄື່ອງກັງວົນ ຜູ້ບໍ່ຂ້ອງໃນກາມ ແລະພົບ ອະທິບາຍວ່າ ບຸກຄົນຜູ້ບໍ່ມີເຄື່ອງກັງວົນ ບໍ່ຂ້ອງ ຄື ບໍ່ເກາະຕິດ ບໍ່ກ່ຽວພັນ ບໍ່ພົວພັນ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງໃນກາມ ແລະພົບ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບຸກຄົນຜູ້ບໍ່ມີເຄື່ອງກັງວົນ ຜູ້ບໍ່ຂ້ອງໃນກາມ ແລະພົບ ດ້ວຍເຫດນັ້ນ

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ບຸກຄົນນັ້ນເປັນຜູ້ບໍ່ມີຄວາມຫວັງ ທັງບໍ່ຫວັງ
ບຸກຄົນນັ້ນເປັນຜູ້ມີປັນຍາ ແຕ່ບໍ່ມີຄວາມດຳຣິດ້ວຍປັນຍາ
ໂຕເທີຍຍະ ທ່ານຈົ່ງຮູ້ຈັກບຸກຄົນຜູ້ບໍ່ມີເຄື່ອງກັງວົນ
ຜູ້ບໍ່ຂ້ອງໃນກາມແລະພົບວ່າເປັນມຸນີ ແນວນີ້

ພ້ອມກັບການຈົບຄາຖາ ຯລຯ ໂຕເທີຍຍະມານົບຯລຯ ໂດຍປະກາດວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ

**ໂຕເທີຍຍະມານະວະປັນຫານິດເທດທີ ໙ ຈົບ**

## ໑໐. ກັປປະມານະວະປັນຫານິດເທດ
## ວ່າດ້ວຍປັນຫາຂອງກັປປະມານົບ

[໖໑] (ທ່ານກັປປະທູນຖາມ ດັ່ງນີ້)

ຂ້າແຕ່ ພຣະອົງຜູ້ນິຣະທຸກ
ຂໍພຣະອົງໂຜດຕັດບອກບ່ອນເພິ່ງຂອງເຫຼົ່າສັດ
ຜູ້ດຳຣົງຢູ່ທ່າມກາງສະ
ຜູ້ຖືກຊະຣາແລະມັດຈຸຣາດຄອບງຳ
ໃນຂະນະເກີດຫ້ວງນ້ຳອັນເປັນມະຫັນຕະໄພ

ອັນໜຶ່ງ ຂໍພຣະອົງໂຜດຕັດບອກບ່ອນເພິ່ງ
ໂດຍວິທີທີ່ທຸກນີ້ຈະບໍ່ເພິ່ງມີແກ່ຂ້າພຣະອົງອີກ (໑)

## ວ່າດ້ວຍສັງສາຣະວັດ

ຄໍາວ່າ ເຫຼົ່າສັດຜູ້ດໍາຣົງຢູ່ທ່າມກາງສະ ອະທິບາຍວ່າ ສົງສານ ຕັດຮຽກວ່າ ສະ ຄື ການມາ ການໄປ ການໄປ ແລະການມາ ຄວາມຕາຍ ຄະຕິ ພົບນ້ອຍພົບໃຫຍ່ ຈຸຕິ ອຸປະບັດ ໕ ຄວາມເກີດ ຄວາມດັບ ຊາດ ຊະຣາ ມໍລະນະໃນບ່ອນສຸດເບື້ອງຕົ້ນແຫ່ງສົງສານບໍ່ຜາກົດ ບ່ອນສຸດເບື້ອງປາຍກໍບໍ່ຜາກົດ ເຫຼົ່າສັດຜູ້ດໍາຣົງຢູ່ແລ້ວ ຄື ດໍາຣົງໝັ້ນແລ້ວ ຕິດແລ້ວ ຕິດແໜ້ນແລ້ວ ຕິດພັນແລ້ວ ຕິດໃຈແລ້ວໃນສົງສານອັນເປັນທ່າມກາງ

ບ່ອນສຸດເບື້ອງຕົ້ນແຫ່ງສົງສານບໍ່ຜາກົດ ແນວໃດ?

ຄື ວັດຕະເປັນໄປແລ້ວສິ້ນຊາດເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວຮ້ອຍຊາດເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວພັນຊາດເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວແສນຊາດເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວໂກດຊາດເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວພັນໂກດຊາດເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວ ແສນໂກດຊາດເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວ ສິ້ນປີເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວ ສິ້ນຮ້ອຍປີເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວພັນປີເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວແສນປີເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວໂກດປີເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວ ຮ້ອຍໂກດປີເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວພັນໂກດປີເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວ ແສນໂກດປີເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວ ສິ້ນກັບເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວ ຮ້ອຍກັບເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວ ພັນກັບເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວ ແສນກັບເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວ ໂກດກັບເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວ ຮ້ອຍໂກດກັບເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວ ພັນໂກດກັບເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະເປັນໄປແລ້ວ ແສນໂກດກັບເທົ່ານີ້ ພົ້ນຈາກນັ້ນຍ່ອມບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ພິກຂຸທັງຫຼາຍ ສົງສານນີ້ ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້
ບ່ອນສຸດເບື້ອງຕົ້ນ ບ່ອນສຸດເບື້ອງປາຍບໍ່ຜາກົດແກ່ເຫຼົ່າສັດ

ຜູ້ຖືກອະວິດຊາກີດຂວາງ ຖືກຕັນຫາຜູກໄວ້
ວົນວຽນ ທ່ອງທ່ຽວໄປ ພິກຂຸທັງຫຼາຍ
ເຫຼົ່າສັດສະເຫວີຍທຸກ ສະເຫວີຍຄວາມຍາກລຳບາກ
ສະເຫວີຍຄວາມພິນາດ ເຕັມປ່າຊ້າ
ເປັນເວລາ ຍາວນານແນວນີ້ແລ

ພິກຂຸທັງຫຼາຍ ຍ້ອນເຫດນີ້
ຈຶ່ງຄວນເບື່ອໜ່າຍ ຄວນຄາຍກຳໜັດ
ຄວນຫຼຸດພົ້ນຈາກສັງຂານທັງປວງ ດັ່ງນັ້ນ
ບ່ອນສຸດເບື້ອງຕົ້ນ ແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ບ່ອນສຸດເບື້ອງປາຍແຫ່ງສົງສານບໍ່ຜາກົດ ແນວໃດ?

ຄື ວັດຕະຈັກເປັນໄປສິ້ນຊາດເທົ່ານີ້ ພົ້ນຈາກນັ້ນຈັກບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງປາຍແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງປາຍແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ວັດຕະຈັກເປັນໄປສິ້ນຮ້ອຍຊາດເທົ່ານີ້ ฯລฯ ພັນຊາດເທົ່ານີ້ ฯລฯ ແສນຊາດເທົ່ານີ້ ฯລฯ ໂກດຊາດເທົ່ານີ້ ฯລฯ ຮ້ອຍໂກດຊາດເທົ່ານີ້ ฯລฯ ພັນໂກດຊາດເທົ່ານີ້ ฯລฯ ແສນໂກດຊາດເທົ່ານີ້ ฯລฯ ປີເທົ່ານີ້ ฯລฯ ຮ້ອຍປີເທົ່ານີ້ ฯລฯ ພັນປີເທົ່ານີ້ ฯລฯ ແສນປີເທົ່ານີ້ ฯລฯ ໂກດປີເທົ່ານີ້ ฯລฯ ຮ້ອຍໂກດປີເທົ່ານີ້ฯລฯ ພັນໂກດປີເທົ່ານີ້ ฯລฯ ແສນໂກດປີເທົ່ານີ້ ฯລฯ ກັບເທົ່ານີ້ ฯລฯ ຮ້ອຍກັບເທົ່ານີ້ ฯລฯ ພັນກັບເທົ່ານີ້ ฯລฯ ແສນກັບເທົ່ານີ້ ฯລฯ ໂກດກັບເທົ່ານີ້ ฯລฯ ຮ້ອຍໂກດກັບເທົ່ານີ້ ฯລฯ ພັນໂກດກັບເທົ່ານີ້ ฯລฯ ແສນໂກດກັບເທົ່ານີ້ ພົ້ນຈາກນັ້ນຈັກບໍ່ເປັນໄປ ຍ້ອນເຫດນັ້ນ ບ່ອນສຸດເບື້ອງປາຍແຫ່ງສົງສານຈຶ່ງບໍ່ມີ ບ່ອນສຸດເບື້ອງປາຍແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່

ບ່ອນສຸດທັງເບື້ອງຕົ້ນທັງເບື້ອງປາຍແຫ່ງສົງສານບໍ່ຜາກົດແມ່ນແນວນີ້ ເຫຼົ່າສັດຜູ້ດຳຣົງຢູ່ແລ້ວ ຄື ດຳຣົງໝັ້ນແລ້ວ ຕິດແລ້ວ ຕິດແໜ້ນແລ້ວ ຕິດພັນແລ້ວ ຕິດໃຈແລ້ວໃນສົງສານອັນເປັນທ່າມກາງ ລວມຄວາມວ່າ ເຫຼົ່າສັດຜູ້ດຳຣົງຢູ່ທ່າມກາງສະ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານກັບປະທູນຖາມ ດັ່ງນີ້ ເປັນບົດສົນທິ ฯລฯ ຄຳວ່າ ດັ່ງນີ້ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ທ່ານ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາລົບ ຄຳວ່າ ທ່ານນີ້ ເປັນຄຳກ່າວທີ່ມີຄວາມເຄົາລົບ ແລະຄວາມຢຳເກງ

ຄຳວ່າ ກັບປະ ເປັນຊື່ຂອງພາມນັ້ນ ฯລฯ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານກັບປະທູນຖາມ ດັ່ງນີ້

ຄຳວ່າ ໃນຂະນະເກີດຫ້ວງນ້ຳອັນເປັນມະຫັນຕະໄພ ອະທິບາຍວ່າ ໃນຂະນະຫ້ວງນ້ຳຄື ກາມ ຫ້ວງນ້ຳຄືພົບ ຫ້ວງນ້ຳຄືທິດຖິ ຫ້ວງນ້ຳຄື ອະວິດຊາ ເກີດ ຄື ເກີດຂຶ້ນ ບັງເກີດ ບັງເກີດ ຂຶ້ນ ຜາກົດ

ຄຳວ່າ ອັນເປັນມະຫັນຕະໄພ ໄດ້ແກ່ ຊາດໄພ (ໄພທີ່ເກີດຍ້ອນອາໄສຊາດ) ຊະຣາໄພ (ໄພທີ່ເກີດຍ້ອນອາໄສຊະຣາ) ພະຍາທິໄພ (ໄພທີ່ເກີດຍ້ອນຄວາມເຈັບປ່ວຍ) ມໍຣະນະໄພ (ໄພ ທີ່ເກີດຍ້ອນມໍຣະນະ) ລວມຄວາມວ່າ ໃນຂະນະເກີດຫ້ວງນ້ຳອັນເປັນມະຫັນຕະໄພ

ຄຳວ່າ ຜູ້ຖືກຊະຣາ ແລະມັດຈຸຣາດຄອບງຳ ອະທິບາຍວ່າ ຜູ້ຖືກຊະຣາຖືກຕ້ອງ ຄອບ ງຳ ຄື ກຸ້ມຣຸມ ຫ້ອມລ້ອມ ຜູ້ຖືກມໍຣະນະຈັບຕ້ອງ ຄອບງຳ ກຸ້ມຣຸມ ຫ້ອມລ້ອມ ໄດ້ແກ່ຜູ້ໄປຕາມ ຊາດ ຊະຣາຕິດຕາມ ພະຍາທິຄອບງຳ ມໍຣະນະຍ່ຳຍີ ບໍ່ມີບ່ອນປົກປ້ອງ ບໍ່ມີບ່ອນຫຼົບຫຼີກ ບໍ່ມີ ບ່ອນເພິ່ງ ບໍ່ມີບ່ອນອາໄສ ລວມຄວາມວ່າ ຜູ້ຖືກຊະຣາ ແລະມັດຈຸຣາດຄອບງຳ

ຄຳວ່າ ຂ້າແຕ່ພຣະອົງຜູ້ນິຣະທຸກ ຯລຯ ຂໍພຣະອົງໂຜດຕັດບອກບ່ອນເພິ່ງ ອະທິບາຍ ວ່າ ຂໍພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ ງ່າຍ ປະກາດບ່ອນເພິ່ງ ຄື ບ່ອນປົກປ້ອງ ບ່ອນຫຼົບຫຼີກ ບ່ອນເພິ່ງ ຄະຕິ ຈຸດໝາຍ

ຄຳວ່າ ຂ້າແຕ່ ພຣະອົງຜູ້ນິຣະທຸກ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມ ເຄົາລົບ ຄຳວ່າ ຂ້າແຕ່ ພຣະອົງຜູ້ນິຣະທຸກ ນີ້ ເປັນຄຳກ່າວທີ່ມີຄວາມເຄົາລົບແລະຄວາມຢຳ ເກງ ລວມຄວາມວ່າ ຂ້າແຕ່ ພຣະອົງຜູ້ນິຣະທຸກ ຯລຯ ຂໍພຣະອົງໂຜດຕັດບອກ ບ່ອນເພິ່ງ

ຄຳວ່າ ພຣະອົງ ໃນຄຳວ່າ ອັນໜຶ່ງ ຂໍພຣະອົງໂຜດຕັດບອກບ່ອນເພິ່ງ ຯລຯ ແກ່ຂ້າພ ຣະອົງ ເປັນຄຳທີ່ພາມຮຽກພຣະຜູ້ມີພຣະພາກເຈົ້າ

ຄຳວ່າ ຂໍພຣະອົງໂຜດຕັດບອກບ່ອນເພິ່ງ ອະທິບາຍວ່າ ຂໍພຣະອົງໂຜດຕັດ ຄື ໂຜດ ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດບ່ອນເພິ່ງ ຄື ບ່ອນ ປົກປ້ອງ ບ່ອນຫຼົບຫຼີກ ບ່ອນຣະລຶກ ຄະຕິ ຈຸດໝາຍ ລວມຄວາມວ່າ ອັນໜຶ່ງ ຂໍພຣະອົງໂຜດ ຕັດບອກບ່ອນເພິ່ງ ຯລຯ ແກ່ຂ້າພຣະອົງ

ຄຳວ່າ ໂດຍວິທີທີ່ທຸກນີ້ຈະບໍ່ເພິ່ງມີ ຯລຯ ອີກ ອະທິບາຍວ່າ ໂດຍວິທີທີ່ທຸກນີ້ເພິ່ງດັບ ຄື ເພິ່ງເຂົ້າໄປສະງົບ ເພິ່ງເຖິງຄວາມສິ້ນສຸດ ຣະງັບໃນຊາດນີ້ເອງ ຄື ທຸກອັນມີໃນປະຕິສົນທິ ບໍ່ ເພິ່ງບັງເກີດອີກ ໄດ້ແກ່ ບໍ່ເກີດ ບໍ່ເກີດຂຶ້ນ ບໍ່ບັງເກີດ ບໍ່ບັງເກີດຂຶ້ນ ໃນກາມທາດ ຣູບທາດ ອະ ຣູບທາດ ກາມະພົບ ຣູບພົບ ອະຣູບພົບ ສັນຍາພົບ ອະສັນຍາພົບ ເນວະສັນຍານາສັນຍາພົບ ເອກະໂວກາຣະພົບ ຈະຕຸໂວກາຣະພົບ ປັນຈະໂວກາຣະພົບ ຄະຕິໃໝ່ ອຸປະບັດ ປະຕິສົນທິ ພົບ ສົງສານ ຫຼື ວັດຕະ ຄື ເພິ່ງດັບ ເຂົ້າໄປສະງົບ ເຖິງຄວາມສິ້ນສຸດ ຣະງັບໃນຊາດນີ້ ລວມ ຄວາມວ່າ ໂດຍວິທີທີ່ທຸກນີ້ຈະບໍ່ເພິ່ງມີ ຯລຯ ອີກ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

(ທ່ານກັບປະທູນຖາມ ດັ່ງນີ້)

ຂ້າແຕ່ ພຣະອົງຜູ້ນິຣະທຸກ
ຂໍພຣະອົງໂຜດຕັດບອກບ່ອນເພິ່ງຂອງເຫຼົ່າສັດ
ຜູ້ດຳຣົງຢູ່ທ່າມກາງສະ
ຜູ້ຖືກຊະຣາແລະມັດຈຸຣາດຄອບງຳ
ໃນຂະນະເກີດຫ້ວງນ້ຳອັນເປັນມະຫັນຕະໄພ
ອັນໜຶ່ງ ຂໍພຣະອົງໂຜດຕັດບອກບ່ອນເພິ່ງ
ໂດຍວິທີທີ່ທຸກນີ້ຈະບໍ່ເພິ່ງມີແກ່ຂ້າພຣະອົງອີກ

[໖໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ກັບປະ)

ກັບປະ ເຮົາຈະບອກບ່ອນເພິ່ງຂອງເຫຼົ່າສັດ
ຜູ້ດຳຣົງຢູ່ທ່າມກາງສະ
ຜູ້ຖືກຊະຣາແລະມັດຈຸຣາດຄອບງຳ
ໃນຂະນະເກີດຫ້ວງນ້ຳອັນເປັນມະຫັນຕະໄພແກ່ທ່ານ (໘)

ຄຳວ່າ ຜູ້ດຳຣົງຢູ່ທ່າມກາງສະ ອະທິບາຍວ່າ ສົງສານ ຕັດຮຽກວ່າ ສະ ຄື ການມາການໄປ ການໄປ ແລະການມາ ຄວາມຕາຍ ຄະຕິ ພົບນ້ອຍພົບໃຫຍ່ ຈຸຕິ ອຸປະບັດ ຄວາມເກີດ ຄວາມດັບ ຊາດ ຊະຣາ ມໍລະນະໃນບ່ອນສຸດເບື້ອງຕົ້ນແຫ່ງສົງສານບໍ່ຜາກົດ ບ່ອນສຸດເບື້ອງປາຍກໍບໍ່ຜາກົດ ເຫຼົ່າສັດຜູ້ດຳຣົງຢູ່ແລ້ວ ຄື ດຳຣົງໝັ້ນແລ້ວ ຕິດແລ້ວ ຕິດແໜ້ນແລ້ວ ຕິດພັນແລ້ວ ຕິດໃຈແລ້ວໃນສົງສານອັນເປັນທ່າມກາງ

ບ່ອນສຸດເບື້ອງຕົ້ນແຫ່ງສົງສານບໍ່ຜາກົດ ແນວໃດ ໆລໆ
ບ່ອນສຸດເບື້ອງຕົ້ນແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່
ບ່ອນສຸດເບື້ອງປາຍແຫ່ງສົງສານບໍ່ຜາກົດ ແນວໃດ ໆລໆ
ບ່ອນສຸດເບື້ອງປາຍແຫ່ງສົງສານຈຶ່ງບໍ່ຜາກົດ ແນວນີ້ແດ່
ບ່ອນສຸດທັງເບື້ອງຕົ້ນທັງເບື້ອງປາຍແຫ່ງສົງສານບໍ່ຜາກົດ ແມ່ນແນວນີ້

ເຫຼົ່າສັດຜູ້ດຳຣົງຢູ່ແລ້ວ ຄື ດຳຣົງໝັ້ນແລ້ວ ຕິດແລ້ວ ຕິດແໜ້ນແລ້ວ ຕິດພັນແລ້ວ ຕິດໃຈແລ້ວໃນສົງສານອັນເປັນທ່າມກາງ ລວມຄວາມວ່າ ເຫຼົ່າສັດຜູ້ດຳຣົງຢູ່ທ່າມກາງສະ

ຄຳວ່າ ກັບປະ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດວ່າ ກັບປະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ກັບປະ

ຄຳວ່າ ໃນຂະນະເກີດຫ້ວງນ້ຳອັນເປັນມະຫັນຕະໄພ ອະທິບາຍວ່າ ໃນຂະນະຫ້ວງນ້ຳຄືກາມ ຫ້ວງນ້ຳຄືພົບ ຫ້ວງນ້ຳຄືທິດຖິ ຫ້ວງນ້ຳຄືອະວິດຊາ ເກີດ ຄື ເກີດຂຶ້ນ ບັງເກີດ ບັງເກີດຂຶ້ນ ຜາກົດ

ຄຳວ່າ ອັນເປັນມະຫັນຕະໄພ ໄດ້ແກ່ ຊາດໄພ ຊະຣາໄພ ພະຍາທິໄພ ມໍຣະນະໄພ ລວມຄວາມວ່າ ໃນຂະນະເກີດຫ້ວງນ້ຳອັນເປັນມະຫັນຕະໄພ

ຄຳວ່າ ຜູ້ຖືກຊະຣາ ແລະມັດຈຸຣາດຄອບງຳ ອະທິບາຍວ່າ ຜູ້ຖືກຊະຣາຖືກຕ້ອງ ຄອບງຳ ຄື ກຸ້ມຣຸມ ຫ້ອມລ້ອມ ຜູ້ຖືກມໍຣະນະຈັບຕ້ອງ ຄອບງຳ ກຸ້ມຣຸມ ຫ້ອມລ້ອມ ໄດ້ແກ່ ຜູ້ໄປຕາມຊາດ ຊະຣາຕິດຕາມ ພະຍາທິຄອບງຳ ມໍຣະນະຍ່ຳຍີ ບໍ່ມີບ່ອນປົກປ້ອງ ບໍ່ມີບ່ອນຫຼົບຫຼີກ ບໍ່ມີບ່ອນເພິ່ງ ບໍ່ມີບ່ອນອາໄສ ລວມຄວາມວ່າ ຜູ້ຖືກຊະຣາ ແລະມັດຈຸຣາດຄອບງຳ

ຄຳວ່າ ເຮົາຈະບອກບ່ອນເພິ່ງ ຯລຯ ແກ່ທ່ານ ອະທິບາຍວ່າ ເຮົາຈະບອກ ຄື ບອກສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດບ່ອນເພິ່ງ ຄື ບ່ອນປົກປ້ອງ ບ່ອນຫຼົບຫຼີກ ບ່ອນເພິ່ງ ຄະຕິ ຈຸດໝາຍ

ຄຳວ່າ ກັບປະ ໃນຄຳວ່າ ກັບປະ ຯລຯ ແກ່ທ່ານ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກ ພາມນັ້ນໂດຍຊື່ ລວມຄວາມວ່າ ເຮົາຈະບອກບ່ອນເພິ່ງ ຯລຯ ແກ່ທ່ານ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ກັບປະ)

ກັບປະ ເຮົາຈະບອກບ່ອນເພິ່ງຂອງເຫຼົ່າສັດ
ຜູ້ດຳຣົງຢູ່ທ່າມກາງສະ
ຜູ້ຖືກຊະຣາແລະມັດຈຸຣາດຄອບງຳ
ໃນຂະນະເກີດຫ້ວງນ້ຳອັນເປັນມະຫັນຕະໄພແກ່ທ່ານ

[໖໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ເຮົາຮຽກນິບພານ ເຊິ່ງບໍ່ມີເຄື່ອງກັງວົນ
ບໍ່ມີເຄື່ອງຍຶດໝັ້ນນີ້ນັ້ນ ວ່າເປັນບ່ອນເພິ່ງອັນບໍ່ມີບ່ອນເພິ່ງອື່ນຍິ່ງກວ່າ
(ຍ້ອນ) ນິບພານເປັນບ່ອນສິ້ນໄປແຫ່ງຊະຣາ ແລະມັດຈຸຣາດ (໓)

ຄຳວ່າ ເຊິ່ງບໍ່ມີເຄື່ອງກັງວົນ ໃນຄຳວ່າ ເຊິ່ງບໍ່ມີເຄື່ອງກັງວົນ ບໍ່ມີເຄື່ອງຍຶດໝັ້ນ ໄດ້ແກ່ ເຄື່ອງກັງວົນຄືຣາຄະ ເຄື່ອງກັງວົນຄືໂທສະ ເຄື່ອງກັງວົນຄືໂມຫະ ເຄື່ອງກັງວົນ ຄືມານະ ເຄື່ອງ

ກັງວົນຄືທິດຖິ ເຄື່ອງກັງວົນຄືກິເລດ ເຄື່ອງກັງວົນຄືທຸດຈະຣິດ ການລະເຄື່ອງກັງວົນ ການເຂົ້າໄປສະງົບເຄື່ອງກັງວົນ ການສະລັດຖິ້ມເຄື່ອງກັງວົນ ການຣະງັບເຄື່ອງກັງວົນໄດ້ ເປັນອະມະຕະນິບພານ ລວມຄວາມວ່າ ເຊິ່ງບໍ່ມີເຄື່ອງກັງວົນ

ຄໍາວ່າ ບໍ່ມີເຄື່ອງຍຶດໝັ້ນ ອະທິບາຍວ່າ ຕັນຫາ ຕັດຮຽກວ່າ ເຄື່ອງຍຶດໝັ້ນ ໄດ້ແກ່ ຄວາມກໍາໜັດ ຄວາມກໍາໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ການລະເຄື່ອງຍຶດໝັ້ນ ການເຂົ້າໄປສະງົບເຄື່ອງຍຶດໝັ້ນ ການສະລັດຖິ້ມເຄື່ອງຍຶດໝັ້ນ ການຣະງັບເຄື່ອງຍຶດໝັ້ນໄດ້ ເປັນອະມະຕະນິບພານ ລວມຄວາມວ່າ ເຊິ່ງບໍ່ມີເຄື່ອງກັງວົນ ບໍ່ມີເຄື່ອງຍຶດໝັ້ນ

ຄໍາວ່າ ນັ້ນວ່າ ເປັນບ່ອນເພິ່ງນັ້ນອັນບໍ່ມີບ່ອນເພິ່ງອື່ນຍິ່ງກວ່າ ອະທິບາຍວ່າ ນີ້ເປັນບ່ອນເພິ່ງ ບ່ອນປົກປ້ອງ ບ່ອນຫຼົບຫຼີກ ບ່ອນເພິ່ງ ເປັນຄະຕິ ເປັນຈຸດໝາຍ

ຄໍາວ່າ ອັນບໍ່ມີບ່ອນເພິ່ງອື່ນ ອະທິບາຍວ່າ ບ່ອນເພິ່ງອື່ນ ຄື ຢ່າງອື່ນຈາກນິບພານນັ້ນບໍ່ມີໂດຍທີ່ແທ້ ທໍານັ້ນ ເປັນບ່ອນເພິ່ງອັນເລີດ ປະເສີດ ວິເສດ ຊັ້ນແນວໜ້າ ສູງສຸດ ປະເສີດແນວນີ້ ລວມຄວາມວ່າ ນັ້ນວ່າເປັນບ່ອນເພິ່ງອັນບໍ່ມີບ່ອນເພິ່ງອື່ນຍິ່ງກວ່າ

ຄໍາວ່າ ເຮົາຮຽກນິບພານ ຯລຯ ນັ້ນ ອະທິບາຍວ່າ ຕັນຫາ ຕັດຮຽກວ່າ ວານະ (ເຄື່ອງສຽບແທງ) ໄດ້ແກ່ ຄວາມກໍາໜັດ ຄວາມກໍາໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ການລະວານະ ການເຂົ້າໄປສະງົບວານະ ການສະລັດຖິ້ມວານະ ການຣະງັບວານະໄດ້ ເປັນອະມະຕະນິບພານ

ຄໍາວ່າ ວ່າ ເປັນບົດສົນທິ ຯລຯ ຄໍາວ່າ ວ່ານີ້ ເປັນຄໍາເຊື່ອມບົດໜ້າກັບບົດຫຼັງເຂົ້ານໍາກັນ

ຄໍາວ່າ ຮຽກ ໄດ້ແກ່ ເວົ້າ ຄື ບອກ ສະແດງ ບັນຍັດ ກໍານົດ ເປີດເຜີຍ ຈໍາແນກ ເຮັດໃຫ້ງ່າຍ ປະກາດ ລວມຄວາມວ່າ ເຮົາຮຽກນິບພານ ຯລຯ ນັ້ນ

ຄໍາວ່າ ເປັນບ່ອນສິ້ນໄປແຫ່ງຊະຣາ ແລະມັດຈຸຣາດ ອະທິບາຍວ່າ ການລະ ການເຂົ້າໄປສະງົບ ການສະລັດຖິ້ມ ການຣະງັບຊະຣາ ແລະມໍຣະນະໄດ້ ເປັນອະມະຕະນິບພານ ລວມຄວາມວ່າ ເປັນບ່ອນສິ້ນໄປແຫ່ງຊະຣາແລະມໍຣະນະ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ເຮົາຮຽກນິບພານ ເຊິ່ງບໍ່ມີເຄື່ອງກັງວົນ
ບໍ່ມີເຄື່ອງຍຶດໝັ້ນນີ້ນັ້ນ ວ່າເປັນບ່ອນເພິ່ງອັນບໍ່ມີບ່ອນເພິ່ງອື່ນຍິ່ງກວ່າ
(ຍ້ອນ) ນິບພານເປັນບ່ອນສິ້ນໄປແຫ່ງຊະຣາແລະມັດຈຸຣາດ

[໓໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ຊົນເຫຼົ່າໃດມີສະຕິຮູ້ນິບພານນັ້ນແລ້ວ
ເຫັນທຳ ດັບກິເລດໄດ້ແລ້ວ
ຊົນເຫຼົ່ານັ້ນຈຶ່ງບໍ່ໄປຕາມອຳນາດມານ ບໍ່ໄປບຳຣຸງມານ (໔)

ຄຳວ່າ ນັ້ນ ໃນຄຳວ່າ ຊົນເຫຼົ່າໃດຮູ້ນິບພານນັ້ນແລ້ວ ອະທິບາຍວ່າ ອະມະຕະນິບພານ ຄື ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ

ຄຳວ່າ ຮູ້ແລ້ວ ໄດ້ແກ່ ຮູ້ແລ້ວ ຄື ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ຊັດແຈ້ງແລ້ວ ໄດ້ແກ່ ຮູ້ແລ້ວ ຄື ຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ຊັດແຈ້ງແລ້ວວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ຄຳວ່າ ເຫຼົ່າໃດ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ມີສະຕິ ໄດ້ແກ່ ມີສະຕິດ້ວຍເຫດ ໔ ຢ່າງ ຄື (໑) ຊື່ວ່າມີສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ ຯລຯ ພຣະອະຣະຫັນຕະຂີນາສົບເຫຼົ່ານັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ມີສະຕິ ລວມຄວາມວ່າ ຊົນເຫຼົ່າໃດມີສະຕິຮູ້ນິບພານນັ້ນແລ້ວ

ຄຳວ່າ ເຫັນທຳ ໃນຄຳວ່າ ເຫັນທຳ ດັບກິເລດໄດ້ແລ້ວ ອະທິບາຍວ່າ ຜູ້ເຫັນທຳ ຄື ຜູ້ຮູ້ທຳ ຜູ້ທຽບຄຽງທຳ ຜູ້ພິຈາລະນາທຳ ຜູ້ຮູ້ແຈ້ງທຳ ຜູ້ເຫັນແຈ້ງທຳ

ຄຳວ່າ ດັບກິເລດໄດ້ແລ້ວ ອະທິບາຍວ່າ ຊື່ວ່າດັບກິເລດໄດ້ແລ້ວ ຍ້ອນເປັນຜູ້ເຮັດໃຫ້ຣາຄະດັບແລ້ວ ຊື່ວ່າດັບກິເລດໄດ້ແລ້ວ ຍ້ອນເປັນຜູ້ເຮັດໃຫ້ໂທສະດັບແລ້ວ ຊື່ວ່າດັບກິເລດໄດ້ແລ້ວ ຍ້ອນເປັນຜູ້ເຮັດໃຫ້ໂມຫະດັບແລ້ວ ຊື່ວ່າດັບກິເລດໄດ້ແລ້ວ ຍ້ອນເປັນຜູ້ເຮັດໃຫ້ ໂກທະ ຯລຯ ອຸປະນາຫະ ຯລຯ ອະກຸສະລາພິສັງຂານທຸກປະເພດດັບແລ້ວ ລວມຄວາມວ່າ ເຫັນທຳ ດັບກິເລດໄດ້ແລ້ວ

ຄຳວ່າ ຊົນເຫຼົ່ານັ້ນຈຶ່ງບໍ່ໄປຕາມອຳນາດມານ ອະທິບາຍວ່າ

ຄຳວ່າ ມານ ໄດ້ແກ່ ມານ ຜູ້ມີກຳດຳ ຄື ຜູ້ຍິ່ງໃຫຍ່ ພາໄປສູ່ຄວາມຕາຍ ບໍ່ໃຫ້ສັດຫຼຸດພົ້ນ ເປັນເຜົ່າພັນຂອງຜູ້ຜະໝາດ

ຄຳວ່າ ຊົນເຫຼົ່ານັ້ນ ຈຶ່ງບໍ່ໄປຕາມອຳນາດມານ ອະທິບາຍວ່າ ຊົນເຫຼົ່ານັ້ນບໍ່ໄປຕາມອຳນາດມານ ທັງມານກໍບໍ່ເປັນໄປໃນອຳນາດຊົນເຫຼົ່ານັ້ນ ຊົນເຫຼົ່ານັ້ນຂົ່ມຂີ່ ຄອບງຳ ຖ້ວມທັບຮັດຄຶງ ຍ່ຳຍີມານ ຄື ຝັກຝ່າຍແຫ່ງມານ ບ້ວງມານ ເບັດມານ ເຫຍື່ອມານ ວິໄສມານ ບ່ອນຢູ່

ຂອງມານ ໂຄຈອນຂອງມານ ເຄື່ອງຜູກແຫ່ງມານ ທ່ຽວໄປ ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ຊົນເຫຼົ່ານັ້ນຈຶ່ງບໍ່ໄປຕາມອຳນາດມານ

ຄຳວ່າ ບໍ່ໄປບຳຣຸງມານ ອະທິບາຍວ່າ ຊົນເຫຼົ່ານັ້ນ ບໍ່ບຳຣຸງ ບໍ່ທ່ຽວບຳຣຸງ ບໍ່ບຳເລີ ບໍ່ຮັບໃຊ້ມານ ຊົນເຫຼົ່ານັ້ນບຳຣຸງ ທ່ຽວບຳຣຸງ ບຳເລີ ຮັບໃຊ້ແຕ່ພຣະຜູ້ມີພຣະພາກພຸດທະເຈົ້າ ລວມຄວາມວ່າ ບໍ່ໄປບຳຣຸງມານ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ຊົນເຫຼົ່າໃດມີສະຕິຮູ້ນິບພານນັ້ນແລ້ວ
ເຫັນທຳ ດັບກິເລດໄດ້ແລ້ວ
ຊົນເຫຼົ່ານັ້ນຈຶ່ງບໍ່ໄປຕາມອຳນາດມານ ບໍ່ໄປບຳຣຸງມານ

ພ້ອມກັບການຈົບຄາຖາ ຯລຯ ກັບປະມານົບ ຯລຯ ໂດຍປະກາດວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ

**ກັບປະມານະວະປັນຫານິດເທດທີ ໑໐ ຈົບ**

# ໑໑. ຊະຕຸກັນນິມານະວະປັນຫານິດເທດ

## ວ່າດ້ວຍປັນຫາຂອງຊະຕຸກັນນິມານົບ

[໙໕] (ທ່ານຊະຕຸກັນນິທູນຖາມ ດັ່ງນີ້)

ຂ້າແຕ່ ພຣະວີຣະ ຂ້າພຣະອົງໄດ້ຍິນວ່າ
ພຣະອົງບໍ່ມີຄວາມຕ້ອງການກາມ ລ່ວງພົ້ນຫ້ວງກິເລດ
ຈຶ່ງມາເຝົ້າເພື່ອທູນຖາມພຣະອົງຜູ້ບໍ່ມີກາມ

ຂ້າແຕ່ ພຣະສະຫັດສະເນດ ຂໍພຣະອົງໂຜດຕັດບອກສັນຕິບົດ
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກທຳ
ອັນແທ້ຈິງນັ້ນແກ່ຂ້າພຣະອົງ (໑)

ຄຳວ່າ ຂ້າແຕ່ພຣະວີຣະ ຂ້າພຣະອົງໄດ້ຍິນວ່າ ພຣະອົງບໍ່ມີຄວາມຕ້ອງການກາມ ອະທິບາຍວ່າ ຂ້າພຣະອົງໄດ້ຍິນ ຄື ສະດັບ ຮຽນ ຊົງຈຳ ເຂົ້າໄປກຳນົດໄວ້ວ່າ ແມ່ນຍ້ອນເຫດນັ້ນ ພຣະຜູ້ມີ ພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຯລຯ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ລວມຄວາມວ່າ ຂ້າພຣະອົງໄດ້ຍິນວ່າ

## ວ່າດ້ວຍພຣະຜູ້ມີພຣະພາກເຈົ້າຊື່ວ່າວີຣະ

ຄຳວ່າ ຂ້າແຕ່ ພຣະວີຣະ ອະທິບາຍວ່າ

ພຣະຜູ້ມີພຣະພາກເຈົ້າຜູ້ ວີຣະ ມີພຣະວິຣິຍະ ຈຶ່ງຊື່ວ່າວີຣະ
ພຣະຜູ້ມີພຣະພາກເຈົ້າຊົງ ອົງອາດ ຈຶ່ງຊື່ວ່າວີຣະ
ພຣະຜູ້ມີພຣະພາກເຈົ້າຊົງ ໃຫ້ຜູ້ອື່ນພາກພຽນ ຈຶ່ງຊື່ວ່າວີຣະ
ພຣະຜູ້ມີພຣະພາກເຈົ້າຊົງ ສາມາດ ຈຶ່ງຊື່ວ່າວີຣະ
ພຣະຜູ້ມີພຣະພາກເຈົ້າຊົງ ກ້າຫານ ຈຶ່ງຊື່ວ່າວີຣະ

ຄື ຊົງກ້າວໄປຂ້າງໜ້າ ບໍ່ຢ້ານ ບໍ່ຫວາດສຽວ ບໍ່ສະດຸ້ງ ບໍ່ໜີ ຊົງລະໄພແລະຄວາມຢ້ານກົວໄດ້ແລ້ວ ໝົດຄວາມຂົນພອງສະຫຍອງເກົ້າ ຈຶ່ງຊື່ວ່າພຣະວີຣະ

ພຣະຜູ້ມີພຣະພາກເຈົ້າຊົງເວັ້ນຂາດຈາກບາບທຳທັງປວງໃນໂລກນີ້
ກ້າວລ່ວງທຸກໃນນະຣົກ ຊົງຢູ່ດ້ວຍຄວາມພຽນ
ຊົງມີຄວາມພຽນ ມີຄວາມມຸ້ງໝັ້ນ ແກ່ກ້າ ໝັ້ນຄົງ
ຮຽກໄດ້ວ່າ ຊົງເປັນແນວນັ້ນ

ຄຳວ່າ ຂ້າແຕ່ພຣະວີຣະ ຂ້າພຣະອົງໄດ້ຍິນວ່າພຣະອົງບໍ່ມີຄວາມຕ້ອງການກາມ ອະທິບາຍວ່າ

ຄຳວ່າ ກາມ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ຯລຯ ເຫຼົ່ານີ້ ຮຽກວ່າ ກິເລດກາມ

ພຣະຜູ້ມີພຣະພາກພຸດທະເຈົ້າຊົງກຳນົດຮູ້ວັດຖຸກາມ ຊົງລະກິເລດກາມໄດ້ແລ້ວ ຍ້ອນເປັນຜູ້ຊົງກຳນົດຮູ້ວັດຖຸກາມ ຍ້ອນຊົງລະກິເລດກາມໄດ້ແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງບໍ່ຊົງຕ້ອງການໃນກາມ ຄື ບໍ່ປາຖະໜາ ບໍ່ມຸ້ງໝາຍ ບໍ່ມຸ້ງຫວັງໃນກາມ

ຊົນເຫຼົ່າໃດຕ້ອງການກາມ ປາຖະໜາ ມຸ້ງໝາຍ ມຸ້ງຫວັງກາມ ຊົນເຫຼົ່ານັ້ນ ຊື່ວ່າຍັງຕ້ອງການກາມ ກຳໜັດໃນຣາຄະ ມີຄວາມສຳຄັນໃນສັນຍາ

ພຣະຜູ້ມີພຣະພາກເຈົ້າບໍ່ຊົງຕ້ອງການກາມ ບໍ່ຊົງປາຖະໜາ ບໍ່ມຸ້ງໝາຍ ບໍ່ມຸ້ງຫວັງກາມ ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າ ບໍ່ມີກາມ ຄື ຊົງປາສະຈາກກາມ ສະລະກາມແລ້ວ ຄາຍກາມແລ້ວ ປ່ອຍກາມແລ້ວ ລະກາມແລ້ວ ສະລັດຖິ້ມກາມແລ້ວ ຄາຍຣາຄະແລ້ວ ປາສະຈາກຣາຄະແລ້ວ ສະລະຣາຄະແລ້ວ ຄາຍຣາຄະແລ້ວ ປ່ອຍຣາຄະແລ້ວ ລະຣາຄະແລ້ວ ສະລັດຖິ້ມຣາຄະແລ້ວ ເປັນຜູ້ໝົດຄວາມຢາກແລ້ວ ດັບແລ້ວ ເຢັນແລ້ວ ມີຕົນອັນປະເສີດສະເຫວີຍສຸກຢູ່ ລວມຄວາມວ່າ ຂ້າແຕ່ ພຣະວີຣະ ຂ້າພຣະອົງໄດ້ຍິນວ່າພຣະອົງບໍ່ມີຄວາມຕ້ອງການກາມ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານຊະຕຸກັນນິທູນຖາມ ດັ່ງນີ້ ເປັນບົດສົນທິ ຯລຯ ຄຳວ່າ ດັ່ງ ນີ້ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ທ່ານ ເປັນຄຳກ່າວດ້ວຍຄວາມຮັກ ຄຳວ່າ ທ່ານ ນີ້ ເປັນຄຳກ່າວທີ່ມີຄວາມ ເຄົາລົບ ແລະຄວາມຢຳເກງ

ຄຳວ່າ ຊະຕຸກັນນິ ເປັນໂຄດຂອງພາມນັ້ນ ຯລຯ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານ ຊະຕຸກັນນິທູນຖາມ ດັ່ງນີ້

ຄຳວ່າ ລ່ວງພົ້ນຫ້ວງກິເລດ ໃນຄຳວ່າ ລ່ວງພົ້ນຫ້ວງກິເລດ ຈຶ່ງມາເຝົ້າເພື່ອທູນຖາມ ພຣະອົງຜູ້ບໍ່ມີກາມ ອະທິບາຍວ່າ ລ່ວງພົ້ນຫ້ວງກິເລດ ຄື ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນຫ້ວງກິ ເລດແລ້ວ ລວມຄວາມວ່າ ລ່ວງພົ້ນຫ້ວງກິເລດ

ຄຳວ່າ ເພື່ອທູນຖາມ ໄດ້ແກ່ ເພື່ອທູນຖາມ ຄື ເພື່ອທູນປຸດສາ ທູນຂໍ ທູນອັນເຊີນ ທູນ ໃຫ້ຊົງປະກາດ

ຄຳວ່າ ຈຶ່ງມາເຝົ້າ ຯລຯ ຜູ້ບໍ່ມີກາມ ອະທິບາຍວ່າ ຈຶ່ງມາເຝົ້າ ຄື ເປັນຜູ້ມາເຝົ້າແລ້ວ ມາເຂົ້າເຝົ້າແລ້ວ ເຖິງພ້ອມແລ້ວ ເປັນຜູ້ມາເຖິງພ້ອມກັບພຣະອົງແລ້ວ ເພື່ອທູນຖາມພຣະອົງຜູ້ບໍ່ ມີກາມ ຄື ຊົງປາສະຈາກກາມ ສະລະກາມແລ້ວ ຄາຍກາມແລ້ວ ປ່ອຍກາມແລ້ວ ລະກາມແລ້ວ ສະລັດຖິ້ມກາມແລ້ວ ໄດ້ແກ່ ຄາຍຣາຄະແລ້ວ ປາສະຈາກຣາຄະແລ້ວ ສະລະຣາຄະແລ້ວ ຄາຍ ຣາຄະແລ້ວ ປ່ອຍຣາຄະແລ້ວ ລະຣາຄະແລ້ວ ສະລັດຖິ້ມຣາຄະແລ້ວ ລວມຄວາມວ່າ ລ່ວງພົ້ນ ຫ້ວງກິເລດ ຈຶ່ງມາເຝົ້າເພື່ອທູນຖາມພຣະອົງຜູ້ບໍ່ມີກາມ

ຄຳວ່າ ຂ້າແຕ່ ພຣະສະຫັດສະເນດ ຂໍພຣະອົງໂຜດຕັດບອກສັນຕິບົດ ອະທິບາຍວ່າ

ຄຳວ່າ ສັນຕິ ໄດ້ແກ່ ທັງສັນຕິແລະສັນຕິບົດ ມີຄວາມໝາຍຢ່າງດຽວກັນ ສັນຕິບົດ ນັ້ນ ເອງ ຄື ອະມະຕະນິບພານ ໄດ້ແກ່ ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະ ທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ບົດນີ້ສະງົບ ບົດນີ້ປະນີດ ຄື ທຳເປັນ ບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນ ດັບກິເລດ ເປັນບ່ອນເຢັນສະນິດ

ອີກປະການໜຶ່ງ ທຳເຫຼົ່າໃດ ເປັນໄປເພື່ອບັນລຸຄວາມສະງົບ ຖືກຕ້ອງຄວາມສະງົບ ເຮັດ ໃຫ້ແຈ້ງຄວາມສະງົບ ຄື ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ເຫຼົ່ານີ້ກໍຕັດຮຽກວ່າ ສັນຕິບົດ

ຂໍພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ ງ່າຍ ປະກາດສັນຕິບົດ ຄື ຕານະບົດ ເລນະບົດ ສະຣະນະບົດ ອະພະຍະບົດ ອັດຈຸຕິບົດ ອະ ມະຕະບົດ ນິບພານບົດ

ຄຳວ່າ ຂ້າແຕ່ພຣະສະຫັດສະເນດ ອະທິບາຍວ່າ ພຣະສັບພັນຍຸຕະຍານຕັດຮຽກວ່າ ພຣະເນດ ພຣະເນດແລະຄວາມເປັນພຣະຊິນນະເຈົ້າຂອງ ພຣະຜູ້ມີພຣະພາກພຸດທະເຈົ້າ ເກີດຂຶ້ນໃນຂະນະດຽວກັນ ບໍ່ກ່ອນ ບໍ່ຫຼັງກັນ ທີ່ເຫງົ້າຕົ້ນໂພ ດັ່ງນັ້ນ ພຣະພຸດທະເຈົ້າ ຈຶ່ງມີພຣະນາມວ່າ ພຣະສະຫັດສະເນດ ລວມຄວາມວ່າ ຂ້າແຕ່ພຣະສະຫັດສະເນດ ຂໍພຣະອົງໂຜດຕັດບອກສັນຕິບົດ

ຄຳວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກທຳອັນແທ້ຈິງນັ້ນແກ່ຂ້າພຣະອົງ ອະທິບາຍວ່າ ອະມະຕະນິບພານຕັດຮຽກວ່າ ທຳແທ້ຈິງ ໄດ້ແກ່ ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ

ຄຳວ່າ ຂໍພຣະອົງໂຜດຕັດບອກ ຯລຯ ນັ້ນແກ່ຂ້າພຣະອົງ ໄດ້ແກ່ ຂໍພຣະອົງໂຜດ ຕັດ ຄື ໂຜດບອກ ຯລຯ ປະກາດ ລວມຄວາມວ່າ ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງ ໂຜດຕັດບອກທຳອັນແທ້ຈິງນັ້ນແກ່ຂ້າພຣະອົງ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

(ທ່ານຊະຕຸກັນນິທູນຖາມ ດັ່ງນີ້)

ຂ້າແຕ່ ພຣະວີຣະ ຂ້າພຣະອົງໄດ້ຍິນວ່າ
ພຣະອົງບໍ່ມີຄວາມຕ້ອງການກາມ ລ່ວງພົ້ນຫ້ວງກິເລດ
ຈຶ່ງມາເຝົ້າເພື່ອຈະທູນຖາມພຣະອົງຜູ້ບໍ່ມີກາມ
ຂ້າແຕ່ພຣະສະຫັດສະເນດ ຂໍພຣະອົງໂຜດຕັດບອກສັນຕິບົດ
ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ ຂໍພຣະອົງໂຜດຕັດບອກທຳ
ອັນແທ້ຈິງນັ້ນແກ່ຂ້າພຣະອົງ

[໖໖] (ທ່ານຊະຕຸກັນນິທູນຖາມວ່າ)

ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງຄອບງຳການທັງຫຼາຍ
ດ້ວຍພຣະເດດ ຊົງເຄື່ອນໄຫວ (ອິລິຍາບົດ) ຢູ່
ເໝືອນດວງອາທິດມີແສງສະຫວ່າງ ສ່ອງແສງປົກຄຸມທົ່ວປະຖະພີ
ພຣະອົງຜູ້ມີພຣະປັນຍາເໝືອນພູຣີ
ຂໍພຣະອົງໂຜດຕັດບອກທຳເປັນເຄື່ອງລະຊາດ
ແລະຊະຣາໃນໂລກນີ້ ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງ
ແກ່ຂ້າພຣະອົງຜູ້ມີປັນຍາໜ້ອຍດ້ວຍເທີ້ນ (໔)

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ໃນຄຳວ່າ ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງຄອບງຳການທັງຫຼາຍ (ດ້ວຍພຣະເດດ) ຊົງເຄື່ອນໄຫວ (ອິລິຍາບົດ) ຢູ່ ເປັນຄຳກ່າວໂດຍຄວາມເຄົາລົບ ໆລໆ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ

ຄຳວ່າ ກາມ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ ໆລໆ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ໆລໆ ເຫຼົ່ານີ້ຮຽກວ່າ ກິເລດກາມ

ພຣະຜູ້ມີພຣະພາກເຈົ້າຊົງກຳນົດຮູ້ວັດຖຸກາມ ຊົງລະ ຄອບງຳ ຄື ຂົ່ມຂີ່ ຖ້ວມທັບ ຄວບຄຸມ ຍ່ຳຍີກິເລດກາມໄດ້ແລ້ວ ສະເດັດໄປ ປະທັບຢູ່ ຊົງເຄື່ອນໄຫວ ຊົງເປັນໄປ ຊົງລ້ຽງພຣະຊົນຊີບ ຊົງດຳເນີນໄປ ຊົງຍັງພຣະຊົນຊີບໃຫ້ດຳເນີນໄປຢູ່ ລວມຄວາມວ່າ ອັນໜຶ່ງພຣະຜູ້ມີພຣະພາກເຈົ້າ ຊົງຄອບງຳການທັງຫຼາຍ (ດ້ວຍພຣະເດດ) ຊົງເຄື່ອນໄຫວ (ອິລິຍາບົດ) ຢູ່

ຄຳວ່າ ເໝືອນດວງອາທິດມີແສງສະຫວ່າງ ສ່ອງແສງປົກຄຸມທົ່ວປະຖະພີ ອະທິບາຍວ່າ ພຣະສຸຣິຍະຮຽກວ່າ ດວງອາທິດ ພື້ນແຜ່ນດິນຮຽກວ່າ ປະຖະພີ

ດວງອາທິດມີແສງສະຫວ່າງ ຄື ປະກອບດ້ວຍແສງສະຫວ່າງ ຄອບງຳ ຂົ່ມຂີ່ ຖ້ວມທັບ ປົກຄຸມ ແຜດເຜົາແຜ່ນດິນ ກຳຈັດຄວາມມືດ ຄື ກຳຈັດຄວາມມືດມິດໃນອາກາດທັງໝົດແລ້ວ ສ່ອງແສງສະຫວ່າງໂຄຈອນໄປໃນອາກາດເທິງທ້ອງຟ້າອັນໂປ່ງໃສ ສັນໃດ ພຣະຜູ້ມີພຣະພາກເຈົ້າມີພຣະເດດຄືຍານ ຄື ປະກອບດ້ວຍພຣະເດດຄືຍານ ຊົງກຳຈັດອະພິສັງຂານສະມຸໄທທັງປວງ ໆລໆ ຄວາມມືດຄື ກິເລດ ຄວາມມືດຄືອະວິດຊາ ຊົງສ່ອງແສງສະຫວ່າງຄືພຣະຍານ ຊົງກຳນົດຮູ້ວັດຖຸກາມ ຊົງລະ ຄອບງຳ ຂົ່ມຂີ່ ຖ້ວມທັບ ຄວບຄຸມ ຍ່ຳຍີກິເລດກາມໄດ້ແລ້ວ ສະເດັດໄປ ປະທັບຢູ່ ຊົງເຄື່ອນໄຫວ ຊົງເປັນໄປ ຊົງລ້ຽງພຣະຊົນຊີບ ຊົງດຳເນີນໄປ ຊົງຍັງພຣະຊົນຊີບໃຫ້ດຳເນີນໄປ ສັນນັ້ນ ລວມຄວາມວ່າ ເໝືອນດວງອາທິດມີແສງສະຫວ່າງ ສ່ອງແສງປົກຄຸມທົ່ວປະຖະພີ

ຄຳວ່າ ພຣະອົງຜູ້ມີພຣະປັນຍາເໝືອນພູຣິ ໆລໆ ແກ່ຂ້າພຣະອົງຜູ້ມີປັນຍານ້ອຍດ້ວຍເທີ້ນ ອະທິບາຍວ່າ ຂ້າພຣະອົງເປັນຜູ້ມີປັນຍານ້ອຍ ຄື ມີປັນຍາຕ່ຳຊາມ ມີປັນຍາໜ້າຮັງກຽດ ມີປັນຍາຫຍາບ ສ່ວນພຣະອົງມີພຣະປັນຍາຫຼາຍ ຄື ມີພຣະປັນຍາກວ້າງຂວາງ ມີພຣະປັນຍາອາດຫານ ມີພຣະປັນຍາວ່ອງໄວ ມີພຣະປັນຍາສຽບຄົມ ມີພຣະປັນຍາເພິກຖອນກິເລດ

ແຜ່ນດິນທ່ານຮຽກວ່າ ພູຣິ ພຣະຜູ້ມີພຣະພາກເຈົ້າຊົງປະກອບດ້ວຍປັນຍາອັນກວ້າງຂວາງ ແຜ່ໄປ ສະເໝີດ້ວຍແຜ່ນດິນນັ້ນ ລວມຄວາມວ່າ ພຣະອົງຜູ້ມີພຣະປັນຍາເໝືອນພູຣິ ໆລໆ ແກ່ຂ້າພຣະອົງ ຜູ້ມີປັນຍານ້ອຍດ້ວຍເທີ້ນ

ຄຳວ່າ ຂໍພຣະອົງໂຜດຕັດບອກທຳ ໃນຄຳວ່າ ຂໍພຣະອົງໂຜດຕັດບອກທຳ ໆລໆ ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງ ອະທິບາຍວ່າ ຂໍພຣະອົງໂຜດຕັດບອກ ຄື ສະແດງ ບັນຍັດ ກຳນົດ

ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດທຳ ຄື ພົມມະຈັນ ທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ພ້ອມທັງອັດຖະ ແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ສະຕິປັດຖານ ໔ ຯລຯ ນິບພານ ແລະປະຕິປະທາເຄື່ອງດຳເນີນໄປສູ່ນິບພານ

ຄຳວ່າ ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງ ໄດ້ແກ່ ເຊິ່ງຂ້າພຣະອົງເພິ່ງຮູ້ ຄື ເພິ່ງຮູ້ທົ່ວ ຮູ້ຊັດແຈ້ງ ຮູ້ສະເພາະ ຮູ້ແຈ້ງສະເພາະ ແທງຕະຫຼອດ ບັນລຸ ຖືກຕ້ອງ ເຮັດໃຫ້ແຈ້ງ ລວມຄວາມວ່າ ໂຜດຕັດບອກທຳ ຯລຯ ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງ

ຄຳວ່າ ທຳເປັນເຄື່ອງລະຊາດ ແລະຊະຣາໃນໂລກນີ້ ອະທິບາຍວ່າ ທຳເປັນເຄື່ອງລະ ຄືທຳເປັນເຄື່ອງເຂົ້າໄປສະງົບ ເປັນເຄື່ອງສະລັດຖິ້ມ ເປັນເຄື່ອງຣະງັບຊາດຊະຣາແລະມໍຣະນະໃນໂລກນີ້ ຄື ອະມະຕະນິບພານ ລວມຄວາມວ່າ ທຳເປັນເຄື່ອງລະຊາດ ແລະຊະຣາໃນໂລກນີ້ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງຄອບງຳການທັງຫຼາຍ
ດ້ວຍພຣະເດດ ຊົງເຄື່ອນໄຫວ (ອິລິຍາບົດ) ຢູ່
ເໝືອນດວງອາທິດມີແສງສະຫວ່າງ ສ່ອງແສງປົກຄຸມທົ່ວປະຖະພີ
ພຣະອົງຜູ້ມີພຣະປັນຍາເໝືອນພູຣີ
ຂໍພຣະອົງໂຜດຕັດບອກທຳເປັນເຄື່ອງລະຊາດ
ແລະຊະຣາໃນໂລກນີ້ ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງ
ແກ່ຂ້າພຣະອົງຜູ້ມີປັນຍານ້ອຍດ້ວຍເທີ້ນ

[ຜາງ] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຊະຕຸກັນນີ)

ທ່ານຈົ່ງກຳຈັດຄວາມຕິດໃຈໃນການທັງຫຼາຍສາ
ທ່ານເຫັນເນກຂຳມະໂດຍຄວາມກະເສມແລ້ວ
ຄວນສະລັດເຄື່ອງກັງວົນທີ່ຍຶດຖື
ຫຼືວ່າເຄື່ອງກັງວົນຢ່າໄດ້ມີແກ່ທ່ານ (໓)

ຄຳວ່າ ໃນການທັງຫຼາຍ ໃນຄຳວ່າ ທ່ານຈົ່ງກຳຈັດຄວາມຕິດໃຈໃນການທັງຫຼາຍສາ ໄດ້ແກ່ການ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸການ (໒) ກິເລດການ ຯລຯ ເຫຼົ່ານີ້ຮຽກວ່າວັດຖຸການ ຯລຯ ເຫຼົ່ານີ້ຮຽກວ່າ ກິເລດການ

ຄຳວ່າ ຄວາມຕິດໃຈ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມຕິດໃຈ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຄຳວ່າ ທ່ານຈົ່ງກຳຈັດຄວາມຕິດໃຈໃນກາມທັງຫຼາຍສາ ອະທິບາຍວ່າ ທ່ານຈົ່ງກຳຈັດ ຄື ກຳຈັດ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມກຳໜັດໃນກາມທັງຫຼາຍ ລວມຄວາມວ່າ ທ່ານຈົ່ງກຳຈັດຄວາມຕິດໃຈໃນກາມທັງຫຼາຍສາ

ຄຳວ່າ ຊະຕຸກັນນີ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍໂຄດ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຊະຕຸກັນນີ

## ວ່າດ້ວຍທຳອັນກະເສມ

ຄຳວ່າ ເນກຂຳມະ ໃນຄຳວ່າ ທ່ານເຫັນເນກຂຳມະໂດຍຄວາມກະເສມແລ້ວ ອະທິບາຍວ່າ ທ່ານເຫັນແລ້ວ ຄື ແນມເຫັນ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງເຊິ່ງການປະຕິບັດຊອບ ການປະຕິບັດເໝາະສົມ ການປະຕິບັດທີ່ບໍ່ເປັນຂ້າເສິກ ການປະຕິບັດທີ່ເອື້ອປະໂຫຍດ ການປະຕິບັດທຳຖືກຕ້ອງຕາມຫຼັກທຳ ການຮັກສາສິນໃຫ້ບໍລິບູນ ຄວາມເປັນຜູ້ສັງລວມອິນຊີ ໖ (ຕາ ຫູ ດັງ ລີ້ນ ກາຍ ໃຈ) ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກອາຫານ ຄວາມເປັນຜູ້ມີຄວາມພຽນເປັນເຄື່ອງຕື່ນຢູ່ສະເໝີ ສະຕິສຳປະຊັນຍະ ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ນິບພານ ແລະປະຕິປະທາເຄື່ອງດຳເນີນໄປສູ່ນິບພານ ໂດຍຄວາມເປັນທຳກະເສມ ຄື ເປັນບ່ອນປົກປ້ອງເປັນບ່ອນຫຼົບຫຼີກ ເປັນບ່ອນເພິ່ງ ບ່ອນອາໄສ ບ່ອນປອດໄພ ບ່ອນບໍ່ຈຸຕິ ບ່ອນບໍ່ຕາຍ ບ່ອນດັບເຢັນ ລວມຄວາມວ່າ ທ່ານເຫັນເນກຂຳມະໂດຍຄວາມກະເສມແລ້ວ

ຄຳວ່າ ເຄື່ອງກັງວົນທີ່ຍຶດຖື ໃນຄຳວ່າ ຄວນສະລັດເຄື່ອງກັງວົນທີ່ຍຶດຖື ຫຼືວ່າ ອະທິບາຍວ່າ ເຄື່ອງກັງວົນທີ່ຖືແລ້ວ ຍຶດໝັ້ນແລ້ວ ຖືໝັ້ນແລ້ວ ຕິດໃຈແລ້ວ ນ້ອມໃຈເຊື່ອແລ້ວ ດ້ວຍອຳນາດຕັນຫາ ດ້ວຍອຳນາດທິດຖິ

ຄຳວ່າ ຄວນສະລັດ ຯລຯ ຫຼືວ່າ ອະທິບາຍວ່າ ຄວນສະລັດ ຄື ຄວນປົດ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ຫຼື ວ່າ ລວມຄວາມວ່າ ຄວນສະລັດເຄື່ອງກັງວົນທີ່ຍຶດຖື ຫຼືວ່າ

ຄຳວ່າ ເຄື່ອງກັງວົນຢ່າໄດ້ມີແກ່ທ່ານ ອະທິບາຍວ່າ ເຄື່ອງກັງວົນຄືຣາຄະ ເຄື່ອງກັງວົນຄືໂທສະ ເຄື່ອງກັງວົນຄືໂມຫະ ເຄື່ອງກັງວົນຄືມານະ ເຄື່ອງກັງວົນຄືທິດຖິ ເຄື່ອງກັງວົນຄືກິເລດ ເຄື່ອງກັງວົນຄືທຸດຈະຣິດ ເຄື່ອງກັງວົນນີ້ຢ່າໄດ້ມີ ຄື ຢ່າໄດ້ປະສົບ ຢ່າໄດ້ຜາກົດແກ່ທ່ານເລີຍໄດ້ແກ່ ທ່ານຈົ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ລວມຄວາມວ່າ ເຄື່ອງກັງວົນຢ່າໄດ້ມີແກ່ທ່ານ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຊະຕຸກັນນິ)

ທ່ານຈົ່ງກຳຈັດຄວາມຕິດໃຈໃນກາມທັງຫຼາຍສາ
ທ່ານເຫັນເນກຂຳມະໂດຍຄວາມກະເສມແລ້ວ
ຄວນສະລັດເຄື່ອງກັງວົນທີ່ຍຶດຖື
ຫຼືວ່າເຄື່ອງກັງວົນຢ່າໄດ້ມີແກ່ທ່ານ

[໖໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ທ່ານຈົ່ງເຮັດກິເລດທີ່ຜາຣົບສັງຂານໃນສ່ວນເບື້ອງຕົ້ນໃຫ້ເຫືອດແຫ້ງໄປ
ເຄື່ອງກັງວົນທີ່ຜາຣົບສັງຂານໃນສ່ວນພາຍຫຼັງຢ່າໄດ້ມີແກ່ທ່ານ
ຖ້າທ່ານຈັກບໍ່ຖືສັງຂານໃນສ່ວນທ່າມກາງໄວ້
ກໍຈັກເປັນຜູ້ເຂົ້າໄປສະງົບ ທ່ຽວໄປ (໔)

ຄຳວ່າ ທ່ານຈົ່ງເຮັດກິເລດທີ່ຜາຣົບສັງຂານໃນສ່ວນເບື້ອງຕົ້ນໃຫ້ເຫືອດແຫ້ງໄປ

ອະທິບາຍວ່າ ກິເລດເຫຼົ່າໃດເພິ່ງຜາຣົບສັງຂານທີ່ເປັນອະດີດເກີດຂຶ້ນ ທ່ານຈົ່ງເຮັດກິເລດເຫຼົ່ານັ້ນໃຫ້ແຫ້ງໄປ ເຫືອດແຫ້ງໄປ ຄື ແຫ້ງເຫືອດໄປ ແຫ້ງຫາຍໄປ ເຮັດໃຫ້ໝົດພືດພັນ ຈົ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ລວມຄວາມວ່າ ທ່ານຈົ່ງເຮັດກິເລດທີ່ຜາຣົບສັງຂານໃນສ່ວນເບື້ອງຕົ້ນໃຫ້ເຫືອດແຫ້ງໄປ ແນວນີ້ແດ່

ອີກໄນໜຶ່ງ ກຳມາພິສັງຂານທີ່ເປັນdwddອະດີດເຊິ່ງໃຫ້ຜົນເຫຼົ່າໃດ ທ່ານຈົ່ງເຮັດກຳມາພິສັງຂານເຫຼົ່ານັ້ນໃຫ້ແຫ້ງໄປ ເຫືອດແຫ້ງໄປ ຄື ແຫ້ງເຫືອດໄປ ແຫ້ງຫາຍໄປ ເຮັດໃຫ້ໝົດພືດພັນ ຈົ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ລວມຄວາມວ່າ ທ່ານຈົ່ງເຮັດກິເລດທີ່ຜາຣົບສັງຂານໃນສ່ວນເບື້ອງຕົ້ນໃຫ້ເຫືອດແຫ້ງໄປ ແນວນີ້ແດ່

## ວ່າດ້ວຍອະນາຄົດຕັດຮຽກວ່າສ່ວນພາຍຫຼັງ

ຄຳວ່າ ເຄື່ອງກັງວົນທີ່ຜາຣົບສັງຂານໃນສ່ວນພາຍຫຼັງຢ່າໄດ້ມີແກ່ທ່ານ ອະທິບາຍວ່າ ເຄື່ອງກັງວົນສ່ວນອະນາຄົດ ຕັດຮຽກວ່າ ພາຍຫຼັງ

ເຄື່ອງກັງວົນຄືຣາຄະ ເຄື່ອງກັງວົນຄືໂທສະ ເຄື່ອງກັງວົນຄືໂມຫະ ເຄື່ອງກັງວົນຄື ມານະ ເຄື່ອງກັງວົນຄືທິດຖິ ເຄື່ອງກັງວົນຄືກິເລດ ເຄື່ອງກັງວົນຄືທຸດຈະຣິດ ອັນຜາຣົບສັງຂານທີ່ເປັນສ່ວນອະນາຄົດ ເຄື່ອງກັງວົນນີ້ຢ່າໄດ້ມີ ຄື ຢ່າໄດ້ມີແລ້ວແກ່ທ່ານ ໄດ້ແກ່ ທ່ານຢ່າໃຫ້ເກີດ ຢ່າໃຫ້ເກີດຂຶ້ນ ຢ່າໃຫ້ບັງເກີດ ຈົ່ງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ລວມຄວາມວ່າ ເຄື່ອງກັງວົນທີ່ຜາຣົບສັງຂານໃນສ່ວນພາຍຫຼັງຢ່າໄດ້ມີແກ່ທ່ານ

ຄຳວ່າ ຖ້າທ່ານຈັກບໍ່ຖືສັງຂານໃນສ່ວນທ່າມກາງໄວ້ ອະທິບາຍວ່າ ຮູບ ເວທະນາ ສັນຍາ ສັງຂານ ວິນຍານ ທີ່ເປັນປັດຈຸບັນ ຕັດຮຽກວ່າ ສ່ວນທ່າມກາງ

ທ່ານຈັກບໍ່ຖື ຄື ບໍ່ຖື ບໍ່ຍຶດຖື ບໍ່ໃຍດີ ບໍ່ເວົ້າເຖິງ ບໍ່ຕິດໃຈສັງຂານທີ່ເປັນປັດຈຸບັນດ້ວຍອຳນາດຕັນຫາ ດ້ວຍອຳນາດທິດຖິ ຄື ຈັກລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມຍິນດີ ການຈົ່ມເຖິງ ຄວາມຕິດໃຈ ຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ ລວມຄວາມວ່າ ຖ້າທ່ານຈັກບໍ່ຖືສັງຂານໃນສ່ວນທ່າມກາງໄວ້

ຄຳວ່າ ກໍຈັກເປັນຜູ້ເຂົ້າໄປສະງົບ ທ່ຽວໄປ ອະທິບາຍວ່າ ຊື່ວ່າເປັນຜູ້ສະງົບ ຍ້ອນສະງົບຣາຄະ ຊື່ວ່າເປັນຜູ້ສະງົບ ຍ້ອນສະງົບໂທສະ ຯລຯ ຊື່ວ່າເປັນຜູ້ສະງົບ ຍ້ອນສະງົບໂມຫະ ຯລຯ ຊື່ວ່າເປັນຜູ້ສະງົບ ເຂົ້າໄປສະງົບ ຄື ສະງົບເຢັນ ດັບ ຣະງັບ ຍ້ອນສະງົບ ຣະງັບ ສະງົບເຢັນ ເຜົາ ດັບ ປາສະຈາກ ສະງົບຣະງັບໂກທະ ຯລຯ ອຸປະນາຫະ ຯລຯ ອະກຸສະລາພິສັງຂານທຸກປະເພດ ທ່ຽວໄປ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ກໍຈັກເປັນຜູ້ເຂົ້າໄປສະງົບ ທ່ຽວໄປ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ທ່ານຈົ່ງເຮັດກິເລດທີ່ຜາຣົບສັງຂານໃນສ່ວນເບື້ອງຕົ້ນໃຫ້ເຫືອດແຫ້ງໄປ  
ເຄື່ອງກັງວົນທີ່ຜາຣົບສັງຂານໃນສ່ວນພາຍຫຼັງຢ່າໄດ້ມີແກ່ທ່ານ  
ຖ້າທ່ານຈັກບໍ່ຖືສັງຂານໃນສ່ວນທ່າມກາງໄວ້  
ກໍຈັກເປັນຜູ້ເຂົ້າໄປສະງົບ ທ່ຽວໄປ

[ຜຌ] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ພາມ ອາສະວະທັງຫຼາຍ  
ອັນເປັນເຫດໃຫ້ເຖິງອຳນາດແຫ່ງມັດຈຸ ບໍ່ມີແກ່ບຸກຄົນນັ້ນ  
ຜູ້ຄາຍຄວາມຕິດໃຈໃນນາມຮູບ ໂດຍປະການທັງປວງ (໕)

ຄຳວ່າ ໂດຍປະການທັງປວງ ໃນຄຳວ່າ ພາມຯລຯ ຜູ້ຄາຍຄວາມຕິດໃຈໃນນາມຮູບໂດຍປະການທັງປວງ ໄດ້ແກ່ ທຸກສິ່ງໂດຍອາການທັງໝົດ ທຸກຢ່າງ ບໍ່ເຫຼືອ ບໍ່ມີສ່ວນເຫຼືອໂດຍປະການທັງປວງ ຄຳວ່າ ໂດຍປະການທັງປວງ ນີ້ ເປັນຄຳກ່າວລວມ ໆ ໄວ້ທັງໝົດ

ຄຳວ່າ ນາມ ໄດ້ແກ່ ອະຮູບປະຂັນ ໔

ຄຳວ່າ ຮູບ ໄດ້ແກ່ ມະຫາພູຕະຮູບ ໔ ແລະຮູບທີ່ອາໄສມະຫາພູຕະຮູບ ໔໌ ຕັນຫາຕັດຮຽກວ່າ ຄວາມຕິດໃຈ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຄຳວ່າ ພາມ ໆລໆ ຜູ້ຄາຍຄວາມຕິດໃຈໃນນາມຮູບ ໂດຍປະການທັງປວງ ອະທິບາຍວ່າ ພາມ ພຣະອະຣະຫັນຕະຂີນາສົບ ຜູ້ຄາຍຄວາມຕິດໃຈແລ້ວ ຄື ຜູ້ປາສະຈາກ ຄວາມຕິດໃຈແລ້ວ ສະລະຄວາມຕິດໃຈແລ້ວ ຄາຍຄວາມຕິດໃຈແລ້ວ ປ່ອຍຄວາມຕິດໃຈແລ້ວ ລະຄວາມຕິດໃຈແລ້ວ ສະລັດຖິ້ມຄວາມຕິດໃຈໄດ້ແລ້ວ ລວມຄວາມວ່າ ພາມ ໆລໆ ຜູ້ຄາຍຄວາມຕິດໃຈໃນນາມຮູບ ໂດຍປະການທັງປວງ

ຄຳວ່າ ອາສະວະທັງຫຼາຍ ໃນຄຳວ່າ ອາສະວະທັງຫຼາຍ ໆລໆ ບໍ່ມີແກ່ບຸກຄົນນັ້ນ ໄດ້ແກ່ ອາສະວະ ໔ ຢ່າງ ຄື

໑. ກາມາສະວະ
໔. ພະວາສະວະ
໓. ທິດຖາສະວະ
໔. ອະວິດຊາສະວະ

ຄຳວ່າ ແກ່ບຸກຄົນນັ້ນ ໄດ້ແກ່ ພຣະອະຣະຫັນຕະຂີນາສົບ

ຄຳວ່າ ບໍ່ມີ ອະທິບາຍວ່າ ອາສະວະເຫຼົ່ານີ້ບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ແກ່ພຣະອະຣະຫັນຕະຂີນາສົບນັ້ນ ໄດ້ແກ່ ອາສະວະທັງຫຼາຍທ່ານລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ອາສະວະທັງຫຼາຍ ໆລໆ ບໍ່ມີແກ່ບຸກຄົນນັ້ນ

ຄຳວ່າ ອັນເປັນເຫດໃຫ້ເຖິງອຳນາດແຫ່ງມັດຈຸ ອະທິບາຍວ່າ ອາສະວະທັງຫຼາຍ ທີ່ເປັນເຫດໃຫ້ໄປສູ່ອຳນາດແຫ່ງມໍຣະນະ ຫຼື ໄປສູ່ອຳນາດຂອງມໍຣະນະ ຫຼື ໄປສູ່ອຳນາດຂອງພັກພວກມານ ບໍ່ມີ ຄື ບໍ່ມີຢູ່ ບໍ່ມີຜາກົດ ຫາບໍ່ໄດ້ແກ່ພຣະອະຣະຫັນຕະຂີນາສົບນັ້ນ ໄດ້ແກ່ ອາສະວະທັງຫຼາຍທ່ານລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ລວມຄວາມວ່າ ອັນເປັນເຫດໃຫ້ເຖິງອຳນາດແຫ່ງມັດຈຸ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ພາມ ອາສະວະທັງຫຼາຍ
ອັນເປັນເຫດໃຫ້ເຖິງອຳນາດແຫ່ງມັດຈຸ ບໍ່ມີແກ່ບຸກຄົນນັ້ນ
ຜູ້ຄາຍຄວາມຕິດໃຈໃນນາມຮູບ ໂດຍປະການທັງປວງ

ພ້ອມກັບການຈົບຄາຖາ ໆລໆ ຊະຕຸກັນນິມານົບ ໆລໆ ໂດຍປະກາດວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ

**ຊະຕຸກັນນິມານະອະບັນຫານິດເທດທີ ໑໑ ຈົບ**

# ໑໔. ພັດທະຣາວຸດມານະວະປັນຫານິດເທດ
## ວ່າດ້ວຍປັນຫາຂອງພັດທະຣາວຸດມານົບ

[໗໐] (ທ່ານພັດທະຣາວຸດທູນຖາມ ດັ່ງນີ້)

ຂ້າພຣະອົງຂໍທູນອາຣາດທະນາພຣະອົງ
ຜູ້ຊົງລະຫ້ວງນ້ຳຄືອາໄລໄດ້ ຕັດຕັນຫາໄດ້
ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ
ຊົງລະຄວາມເພີດເພີນໄດ້ ຂ້າມຫ້ວງກິເລດໄດ້
ຫຼຸດພົ້ນແລ້ວ ລະການກຳນົດ ມີພຣະປັນຍາດີ
ຊົນທັງຫຼາຍເມື່ອໄດ້ຟັງພຣະດຳຣັດຂອງພຣະອົງຜູ້ນາຄະແລ້ວ
ຈຶ່ງຈັກກັບໄປຈາກບ່ອນນີ້ (໑)

ຄຳວ່າ ຜູ້ຊົງລະຫ້ວງນ້ຳຄືອາໄລໄດ້ ໃນຄຳວ່າ ຜູ້ຊົງລະຫ້ວງນ້ຳຄືອາໄລໄດ້ ຕັດຕັນຫາໄດ້ ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ອະທິບາຍວ່າ ຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍ ແລະຄວາມຢຶດໝັ້ນອັນເປັນເຫດທີ່ໃຈເຂົ້າໄປ ຕັ້ງໝັ້ນຖືໝັ້ນນອນເນື່ອງໃນຮູບທາດ ພຣະຜູ້ມີພຣະພາກພຸດທະເຈົ້າຊົງລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າຜູ້ລະຫ້ວງນ້ຳຄືອາໄລໄດ້ ຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍ ແລະຄວາມຢຶດໝັ້ນອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນນອນເນື່ອງໃນເວທະນາທາດ ຯລຯ ໃນສັນຍາທາດ ຯລຯ ໃນສັງຂານທາດ ຯລຯ ໃນວິນຍານທາດ ພຣະຜູ້ມີພຣະພາກພຸດທະເຈົ້າຊົງລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າ ຜູ້ຊົງລະຫ້ວງນ້ຳຄືອາໄລໄດ້

ຄຳວ່າ ຕັດຕັນຫາໄດ້ ອະທິບາຍວ່າ

ຄຳວ່າ ຕັນຫາ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ ຕັນຫານັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕັດແລ້ວ ຄື ຕັດຂາດແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄື ຍານແລ້ວ ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າຕັດຕັນຫາໄດ້

ຄຳວ່າ ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ອະທິບາຍວ່າ ຕັນຫາຕັດຮຽກວ່າ ເຫດໃຫ້ຫວັ່ນໄຫວ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຕັນຫາເຫດໃຫ້ຫວັ່ນໄຫວນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າຊົງລະໄດ້ເດັດຂາດແລ້ວ ຄື ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ຍ້ອນເປັນຜູ້ລະຕັນຫາເຫດໃຫ້ຫວັ່ນໄຫວໄດ້ແລ້ວ ຈຶ່ງຊື່ວ່າບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ພຣະຜູ້ມີພຣະພາກເຈົ້າບໍ່ຊົງຫວັ່ນໄຫວ ຄື ບໍ່ຊົງສະເທືອນ ບໍ່ເຄື່ອນໄຫວ ບໍ່ສະທ້ານ ບໍ່ສັ່ນສະທ້ານ ຍ້ອນໄດ້ລາບ ຍ້ອນເສື່ອມລາບແດ່ ຍ້ອນໄດ້ຍົດ ຍ້ອນເສື່ອມຍົດແດ່ ຍ້ອນສັນເສີນ ຍ້ອນນິນທາແດ່ ຍ້ອນໄດ້ສຸກ ຍ້ອນທຸກແດ່ ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າ ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ລວມຄວາມວ່າ ຜູ້ຊົງລະຫ້ວງນ້ຳຄືອາໄລໄດ້ ຕັດຕັນຫາໄດ້ ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານພັດທະຣາວຸດທູນຖາມ ດັ່ງນີ້ ເປັນບົດສົນທິ ຯລຯ ຄຳວ່າ ດັ່ງນີ້ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ທ່ານ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາລົບ ຄຳວ່າ ທ່ານ ນີ້ ເປັນຄຳກ່າວທີ່ມີຄວາມເຄົາລົບ ແລະຄວາມຢຳເກງ

ຄຳວ່າ ພັດທະຣາວຸດ ເປັນຊື່ຂອງພາມນັ້ນ ຯລຯ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານພັດທະຣາວຸດທູນຖາມ ດັ່ງນີ້

ຄຳວ່າ ຊົງລະຄວາມເພີດເພີນໄດ້ ຂ້າມຫ້ວງກິເລດໄດ້ ຫຼຸດພົ້ນແລ້ວ ອະທິບາຍວ່າ ຕັນຫາຕັດຮຽກວ່າ ຄວາມເພີດເພີນ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ ຄວາມເພີດເພີນຄືຕັນຫານັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງລະໄດ້ເດັດຂາດແລ້ວ ຄື ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າລະຄວາມເພີດເພີນໄດ້

ຄຳວ່າ ຂ້າມຫ້ວງກິເລດໄດ້ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊົງຂ້າມ ຄື ຂ້າມຂຶ້ນ ຂ້າມພົ້ນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນແລ້ວເຊິ່ງກາໂມຄະ ພະໂວຄະ ທິດໂຖຄະ ອະວິດໂຊຄະ ທາງແຫ່ງສົງສານທັງປວງ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງຢູ່ໃນ (ອະຣິຍະວາສະທຳ) ແລ້ວ ປະພຶດຈະຣະນະທຳແລ້ວ ຯລຯ ພຣະອົງບໍ່ມີ ການວຽນເກີດ ວຽນແກ່ ວຽນຕາຍ ແລະພົບໃໝ່ກໍບໍ່ມີອີກ ລວມຄວາມວ່າ ຊົງລະຄວາມເພີດເພີນໄດ້ ຂ້າມຫ້ວງກິເລດໄດ້ ຫຼຸດພົ້ນແລ້ວ

ຄຳວ່າ ຫຼຸດພົ້ນແລ້ວ ອະທິບາຍວ່າ ຈິດຂອງພຣະຜູ້ມີພຣະພາກເຈົ້າພົ້ນໄປແລ້ວ ຫຼຸດພົ້ນແລ້ວ ຫຼຸດພົ້ນໄປດ້ວຍດີແລ້ວຈາກຣາຄະ ຈິດຂອງພຣະຜູ້ພຣະພາກເຈົ້າພົ້ນໄປແລ້ວ ຫຼຸດພົ້ນແລ້ວ ຫຼຸດພົ້ນໄປດ້ວຍດີແລ້ວຈາກໂທສະ ຈິດຂອງພຣະຜູ້ມີພຣະພາກເຈົ້າພົ້ນໄປແລ້ວ ຫຼຸດພົ້ນແລ້ວ ຫຼຸດພົ້ນໄປດ້ວຍດີແລ້ວຈາກໂມຫະ ຈິດຂອງພຣະຜູ້ມີພຣະພາກເຈົ້າພົ້ນໄປແລ້ວ ຫຼຸດພົ້ນແລ້ວ

ຫຼຸດພົ້ນໄປດ້ວຍດີແລ້ວຈາກໂກທະ ອຸປະນາຫະ ຯລຯ ຈາກອະກຸສະລາພິສັງຂານທຸກປະເພດ ລວມຄວາມວ່າ ລະຄວາມເພີດເພີນໄດ້ ຂ້າມທ້ອງກິເລດໄດ້ ຫຼຸດພົ້ນແລ້ວ

ຄຳວ່າ ຂ້າພຣະອົງຂໍທູນອາຣາດທະນາ ຯລຯ ລະການກຳນົດ ມີພຣະປັນຍາດີ ອະທິບາຍວ່າ

ຄຳວ່າ ການກຳນົດ ໄດ້ແກ່ ການກຳນົດ ໒ ຢ່າງ ຄື (໑) ການກຳນົດດ້ວຍອຳນາດຕັນຫາ (໒) ການກຳນົດດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າ ການກຳນົດດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າ ການກຳນົດດ້ວຍອຳນາດທິດຖິ

ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງລະການກຳນົດດ້ວຍອຳນາດຕັນຫາ ສະລັດຖິ້ມການກຳນົດດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ຊົງລະການກຳນົດດ້ວຍອຳນາດຕັນຫາ ສະລັດຖິ້ມການກຳນົດດ້ວຍອຳນາດທິດຖິ ພຣະພຸດທະເຈົ້າຈຶ່ງຊື່ວ່າ ລະການກຳນົດ

ຄຳວ່າ ຂ້າພຣະອົງຂໍທູນອາຣາດທະນາ ໄດ້ແກ່ ທູນຂໍ ທູນອາຣາດທະນາ ຄື ອັນເຊີນ ຍິນດີ ປາຖະໜາ ມຸ້ງໝາຍ ພໍໃຈ ມຸ້ງຫວັງ

ຄຳວ່າ ມີພຣະປັນຍາດີ ອະທິບາຍວ່າ ປັນຍາຕັດຮຽກວ່າ ເມທາ (ປັນຍາເຄື່ອງທຳລາຍກິເລດ) ໄດ້ແກ່ ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມເລືອກເຟັ້ນທຳສຳມາທິດຖິ

ພຣະຜູ້ມີພຣະພາກເຈົ້າຊົງປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມແລ້ວດ້ວຍປັນຍາເຄື່ອງທຳລາຍກິເລດນີ້ ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າມີພຣະປັນຍາດີ ລວມຄວາມວ່າ ຂ້າພຣະອົງຂໍທູນອາຣາດທະນາ ຯລຯ ລະການກຳນົດມີພຣະປັນຍຍາດີ

ຄຳວ່າ ຜູ້ນາຄະ ໃນຄຳວ່າ ຊົນທັງຫຼາຍເມື່ອໄດ້ຟັງພຣະດຳຣັດຂອງພຣະອົງຜູ້ນາຄະແລ້ວ ຈຶ່ງຈັກກັບໄປຈາກບ່ອນນີ້ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊື່ວ່າ ຜູ້ນາຄະ

ຍ້ອນບໍ່ຊົງທຳຄວາມຊົ່ວ ພຣະຜູ້ມີພຣະພາກເຈົ້າຊື່ວ່າ ຜູ້ນາຄະ ຍ້ອນບໍ່ຊົງເຖິງ ພຣະຜູ້ມີພຣະພາກເຈົ້າຊື່ວ່າ ຜູ້ນາຄະ ຍ້ອນບໍ່ຊົງກັບມາຫາ ຯລຯ ພຣະຜູ້ມີພຣະພາກເຈົ້າຊື່ວ່າ ຜູ້ນາຄະຍ້ອນບໍ່ຊົງກັບມາຫາ ເປັນແນວນີ້

ຄຳວ່າ ຊົນທັງຫຼາຍເມື່ອໄດ້ຟັງພຣະດຳຣັດຂອງພຣະອົງຜູ້ນາຄະແລ້ວ ຈຶ່ງຈັກກັບໄປຈາກບ່ອນນີ້ ອະທິບາຍວ່າ ຊົນທັງຫຼາຍເມື່ອໄດ້ຟັງ ຄື ເມື່ອໄດ້ສະດັບ ຮຽນ ຊົງຈຳ ເຂົ້າໄປກຳນົດແລ້ວ ເຊິ່ງພຣະດຳຣັດ ຄື ຄຳທີ່ເປັນແນວທາງ ເທດສະໜາ ຄຳສັ່ງສອນ ຄຳພ່ຳສອນຂອງພຣະອົງ ຈຶ່ງຈັກກັບ ຄື ດຳເນີນໄປ ຈາກໄປ ໄປສູ່ທິດນ້ອຍທິດໃຫຍ່ຈາກບ່ອນນີ້ ລວມຄວາມວ່າ ຊົນທັງຫຼາຍເມື່ອໄດ້ຟັງພຣະດຳຣັດຂອງພຣະອົງຜູ້ນາຄະ ແລ້ວຈຶ່ງຈັກກັບໄປຈາກບ່ອນນີ້ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

(ທ່ານພັດທະຣາວຸດທູນຖາມ ດັ່ງນີ້)

ຂ້າພຣະອົງຂໍທູນອາຣາດທະນາພຣະອົງ
ຜູ້ຊົງລະຫ້ວງນ້ຳຄືອາໄລໄດ້ ຕັດຕັນຫາໄດ້
ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ
ຊົງລະຄວາມເພີດເພີນໄດ້ຂ້າມຫ້ວງກິເລດໄດ້
ຫຼຸດພົ້ນແລ້ວ ລະການກຳນົດ ມີພຣະປັນຍາດີ
ຊົນທັງຫຼາຍເມື່ອໄດ້ຟັງພຣະດຳຣັດຂອງພຣະອົງຜູ້ນາຄະແລ້ວ
ຈຶ່ງຈັກກັບໄປຈາກບ່ອນນີ້

[໗໑] (ທ່ານພັດທະຣາວຸດທູນຖາມວ່າ)

ຂ້າແຕ່ ພຣະວີຣະ ຊົນຕ່າງ ໆ ຈາກຊົນນະບົດທັງຫຼາຍ
ມາຊຸມນຸມກັນ (ໃນບ່ອນນີ້) ຫວັງເປັນຢ່າງຍິ່ງ (ທີ່ຈະໄດ້ຟັງ)
ພຣະດຳຣັດຂອງພຣະອົງ ຂໍພຣະອົງໂຜດພະຍາກອນ (ບັນຫາ)
ແກ່ຊົນເຫຼົ່ານັ້ນໃຫ້ຊັດແຈ້ງດ້ວຍເທີ້ນ
ຍ້ອນວ່າທຳນີ້ພຣະອົງຊົງຮູ້ແຈ້ງແລ້ວ (໔)

ຄຳວ່າ ຊົນຕ່າງ ໆ ໃນຄຳວ່າ ຊົນຕ່າງ ໆ ຈາກຊົນນະບົດທັງຫຼາຍ ມາຊຸມນຸມກັນ (ໃນບ່ອນນີ້) ໄດ້ແກ່ ກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາແລະມະນຸດ

ຄຳວ່າ ຈາກຊົນນະບົດທັງຫຼາຍ ມາຊຸມນຸມກັນ (ໃນບ່ອນນີ້) ອະທິບາຍວ່າ ຈາກແຄວ້ນອັງຄະ ມະຄົດ ກະລິງຄະ ກາສີ ໂກສົນ ວັດຊີ ມັນລະ ວັງສະ ກຸຣຸ ປັນຈາລະ ມັດສະ ສຸຣະເສນະ ອັດສະກະ ອະວັນຕີ ໂຍນະ (ຄັນທາຣະ) ແລະກຳໂພຊະ

ຄຳວ່າ ມາຊຸມນຸມກັນ (ໃນບ່ອນນີ້) ອະທິບາຍວ່າ ມາຊຸມນຸມກັນ ຄື ມາພ້ອມກັນ ມາລວມກັນ ມາປະຊຸມກັນ (ໃນບ່ອນນີ້) ລວມຄວາມວ່າ ຊົນຕ່າງ ໆ ຈາກຊົນນະບົດທັງຫຼາຍມາຊຸມນຸມກັນ (ໃນບ່ອນນີ້)

## ວ່າດ້ວຍພຣະຜູ້ມີພຣະພາກເຈົ້າຊື່ວ່າວີຣະ

ຄຳວ່າ ຂ້າແຕ່ພຣະວີຣະ ໃນຄຳວ່າ ຂ້າແຕ່ພຣະວີຣະ ໆລໆ ຫວັງເປັນຢ່າງຍິ່ງ (ທີ່ຈະໄດ້ຟັງ) ພຣະດຳຣັດຂອງພຣະອົງ ອະທິບາຍວ່າ

| | |
|---|---|
| ພຣະຜູ້ມີພຣະພາກເຈົ້າຜູ້ວີຣະ ມີພຣະວິຣິຍະ | ຈຶ່ງຊື່ວ່າວີຣະ |
| ພຣະຜູ້ມີພຣະພາກເຈົ້າຊົງອົງອາດ | ຈຶ່ງຊື່ວ່າວີຣະ |
| ພຣະຜູ້ມີພາກເຈົ້າຊົງໃຫ້ຜູ້ອື່ນພາກພຽນ | ຈຶ່ງຊື່ວ່າວີຣະ |

ພຣະຜູ້ມີພຣະພາກເຈົ້າຊົງສາມາດ ຈຶ່ງຊື່ວ່າວີຣະ
ພຣະຜູ້ມີພຣະພາກເຈົ້າຊົງໝົດຄວາມຂົນພອງສະຫຍອງເກົ້າ ຈຶ່ງຊື່ວ່າວີຣະ
ພຣະຜູ້ມີພຣະພາກເຈົ້າຊົງເວັ້ນຂາດຈາກບາບທຳທັງປວງໃນໂລກນີ້
ກ້າວລ່ວງທຸກໃນນະຣົກ ຊົງຢູ່ດ້ວຍຄວາມພຽນ
ຊົງມີຄວາມພຽນ ມີຄວາມມຸ້ງໝັ້ນ ແກ່ກ້າ ໝັ້ນຄົງ
ຮຽກໄດ້ວ່າ ຊົງເປັນແນວນັ້ນ

ຄຳວ່າ ຂ້າແຕ່ ພຣະວີຣະ ຯລຯ ຫວັງເປັນຢ່າງຍິ່ງ (ທີ່ຈະໄດ້ຟັງ) ພຣະດຳຣັດຂອງພຣະອົງ ໄດ້ແກ່ ພຣະດຳຣັດ ຄຳທີ່ເປັນແນວທາງ ເທດສະໜາ ຄຳພໍ່າສອນ

ຄຳວ່າ ຫວັງເປັນຢ່າງຍິ່ງ ອະທິບາຍວ່າ ຫວັງເປັນຢ່າງຍິ່ງ (ທີ່ຈະໄດ້ຟັງ) ຄື ຕ້ອງການ ຍິນດີ ປາຖະໜາ ມຸ້ງໝາຍ ມຸ້ງຫວັງ ລວມຄວາມວ່າ ຂ້າແຕ່ພຣະວີຣະ ຯລຯ ຫວັງເປັນຢ່າງຍິ່ງ (ທີ່ຈະໄດ້ຟັງ) ພຣະດຳຣັດຂອງພຣະອົງ

ຄຳວ່າ ແກ່ຊົນເຫຼົ່ານັ້ນ ໃນຄຳວ່າ ຂໍພຣະອົງໂຜດພະຍາກອນ (ປັນຫາ) ແກ່ຊົນເຫຼົ່ານັ້ນໃຫ້ຊັດແຈ້ງດ້ວຍເທີ້ນ ອະທິບາຍວ່າ ແກ່ຊົນເຫຼົ່ານັ້ນ ຄື ກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາ ແລະມະນຸດ

ຄຳວ່າ ພຣະອົງ ເປັນຄຳທີ່ພາມຮຽກພຣະຜູ້ມີພຣະພາກເຈົ້າ

ຄຳວ່າ ໂຜດພະຍາກອນ (ປັນຫາ) ຯລຯ ໃຫ້ຊັດແຈ້ງດ້ວຍເທີ້ນ ອະທິບາຍວ່າ ຂໍພຣະອົງໂຜດຕັດບອກ ຄື ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດໃຫ້ຊັດແຈ້ງດ້ວຍເທີ້ນ ລວມຄວາມວ່າ ຂໍພຣະອົງໂຜດພະຍາກອນ (ປັນຫາ) ແກ່ຊົນເຫຼົ່ານັ້ນໃຫ້ຊັດແຈ້ງດ້ວຍເທີ້ນ

ຄຳວ່າ ຍ້ອນວ່າທຳນີ້ພຣະອົງຊົງຮູ້ແຈ້ງແລ້ວ ອະທິບາຍວ່າ ຍ້ອນວ່າ ພຣະອົງຊົງຮູ້ແລ້ວ ຄື ຊົງຮູ້ແລ້ວ ທຽບຄຽງແລ້ວ ພິຈາລະນາແລ້ວ ເຮັດໃຫ້ກະຈ່າງແລ້ວ ເຮັດໃຫ້ຊັດແຈ້ງແລ້ວ ລວມຄວາມວ່າ ຂໍພຣະອົງໂຜດພະຍາກອນ (ປັນຫາ) ແກ່ຊົນເຫຼົ່ານັ້ນໃຫ້ແຈ່ມແຈ້ງດ້ວຍເທີ້ນ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ຂ້າແຕ່ ພຣະວີຣະ ຊົນຕ່າງ ໆ ຈາກຊົນນະບົດທັງຫຼາຍ
ມາຊຸມນຸມກັນ (ໃນບ່ອນນີ້) ຫວັງເປັນຢ່າງຍິ່ງ (ທີ່ຈະໄດ້ຟັງ)
ພຣະດຳຣັດຂອງພຣະອົງ ຂໍພຣະອົງໂຜດພະຍາກອນ (ປັນຫາ)
ແກ່ຊົນເຫຼົ່ານັ້ນໃຫ້ຊັດແຈ້ງດ້ວຍເທີ້ນ
ຍ້ອນວ່າທຳນີ້ພຣະອົງຊົງຮູ້ແຈ້ງແລ້ວ

[໗໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພັດທະຣາວຸດ)

ນໍຣະຊົນຄວນທຳລາຍເຄື່ອງຢຶດໝັ້ນທັງປວງ
ທັງຊັ້ນສູງ ຊັ້ນຕ່ຳແລະຊັ້ນກາງ
ຍ້ອນສັດທັງຫຼາຍເຂົ້າໄປຢຶດຖືຂັນໃດ ໆ ໃນໂລກ
ມານຍ່ອມຕິດຕາມສັດຍ້ອນສິ່ງທີ່ຢຶດຖືນັ້ນ ໆ ແລ (໑)

ຄຳວ່າ ນໍຣະຊົນຄວນທຳລາຍເຄື່ອງຢຶດໝັ້ນທັງປວງ ອະທິບາຍວ່າ ຣູບຕັນຫາ ຕັດ ຮຽກວ່າ ເຄື່ອງຢຶດໝັ້ນ

ຄຳວ່າ ເຄື່ອງຢຶດໝັ້ນ ອະທິບາຍວ່າ ຣູບຕັນຫາ ທ່ານຮຽກວ່າເຄື່ອງຢຶດໝັ້ນ ຍ້ອນເຫດໃດ ຍ້ອນສັດທັງຫຼາຍຍ່ອມຢຶດຖື ເຂົ້າໄປຢຶດຖື ຄື ຖື ຢຶດໝັ້ນ ຖືໝັ້ນຣູບດ້ວຍຕັນຫານັ້ນ ຯລຯ ໄດ້ແກ່ ສັດທັງຫຼາຍ ຍ່ອມຢຶດຖື ເຂົ້າໄປຢຶດຖື ຄື ຖື ຢຶດໝັ້ນ ຖືໝັ້ນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ ຄະຕິ ຯລຯ ອຸປະບັດ ຯລຯ ປະຕິສົນທິ ຯລຯ ພົບ ຯລຯ ສົງສານ ຯລຯ ວັດຕະ ຍ້ອນເຫດນັ້ນ ຣູບຕັນຫາເປັນຕົ້ນນັ້ນ ທ່ານຈຶ່ງຮຽກວ່າ ເຄື່ອງຢຶດໝັ້ນ

ຄຳວ່າ ນໍຣະຊົນຄວນທຳລາຍເຄື່ອງຢຶດໝັ້ນທັງປວງ ອະທິບາຍວ່າ ນໍຣະຊົນຄວນທຳລາຍ ຄື ເພິ່ງກຳຈັດ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງເຄື່ອງຢຶດໝັ້ນທັງໝົດ ລວມຄວາມວ່າ ນໍຣະຊົນຄວນທຳລາຍເຄື່ອງຢຶດໝັ້ນທັງປວງ

ຄຳວ່າ ພັດທະຣາວຸດ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພັດທະຣາວຸດ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພັດທະຣາວຸດ

ຄຳວ່າ ທັງຊັ້ນສູງ ຊັ້ນຕ່ຳ ແລະຊັ້ນກາງ ອະທິບາຍວ່າ

ອະນາຄົດ ຕັດຮຽກວ່າຊັ້ນສູງ ອະດີດ ຕັດຮຽກວ່າຊັ້ນຕ່ຳ ປັດຈຸບັນ ຕັດຮຽກວ່າ ຊັ້ນກາງ

ກຸສົນທຳ ຕັດຮຽກວ່າຊັ້ນສູງ ອະກຸສົນທຳ ຕັດຮຽກວ່າຊັ້ນຕ່ຳ ອັບພະຍາກະຕະທຳ ຕັດຮຽກວ່າຊັ້ນກາງ

ເທວະໂລກ ຕັດຮຽກວ່າຊັ້ນສູງ ອະບາຍໂລກ ຕັດຮຽກວ່າຊັ້ນຕ່ຳ ມະນຸດໂລກ ຕັດຮຽກວ່າຊັ້ນກາງ

ສຸກເວທະນາ ຕັດຮຽກວ່າຊັ້ນສູງ ທຸກຂະເວທະນາ ຕັດຮຽກວ່າຊັ້ນຕ່ຳ ອະທຸກຂະມະສຸຂະເວທະນາ ຕັດຮຽກວ່າຊັ້ນກາງ

ອະຣູບທາດ ຕັດຮຽກວ່າຊັ້ນສູງ ກາມທາດ ຕັດຮຽກວ່າຊັ້ນ ຕ່ຳ ຣູບທາດ ຕັດ ຮຽກວ່າຊັ້ນກາງ

ເບື້ອງສູງຈາກຝາຕີນຂຶ້ນໄປ ຕັດຮຽກວ່າຊັ້ນສູງ ເບື້ອງຕ່ຳຈາກປາຍຜົມລົງມາ ຕັດ ຮຽກວ່າຊັ້ນຕ່ຳ ສູນກາງ ຕັດຮຽກວ່າຊັ້ນກາງ ລວມຄວາມວ່າ ທັງຊັ້ນສູງ ຊັ້ນຕ່ຳ ແລະຊັ້ນກາງ

ຄຳວ່າ ຍ້ອນສັດທັງຫຼາຍເຂົ້າໄປຢຶດຖືຂັນໃດ ໆ ໃນໂລກ ອະທິບາຍວ່າ ຍ້ອນ ສັດທັງຫຼາຍຢຶດຖື ເຂົ້າໄປຢຶດຖື ຄື ຖື ຢຶດໝັ້ນ ຖືໝັ້ນຮູບ ເວທະນາ ສັນຍາ ສັງຂານ ວິນຍານໃດ ໆ

ຄຳວ່າ ໃນໂລກ ອະທິບາຍວ່າ ໃນອະບາຍໂລກ ຯລຯ ອາຍະຕະນະໂລກ ລວມຄວາມວ່າ ຍ້ອນສັດທັງຫຼາຍເຂົ້າໄປຢຶດຖືຂັນໃດ ໆ ໃນໂລກ

ຄຳວ່າ ມານຍ່ອມຕິດຕາມສັດ ຍ້ອນສິ່ງທີ່ຢຶດຖືນັ້ນ ໆ ແລ ອະທິບາຍວ່າ ຂັນທະມານ ທາດມານ ອາຍະຕະນະມານ ຄະຕິມານ ອຸປະບັດມານ ປະຕິສົນທິມານ ພະວະມານ ສັງສາຣະມານ ວັດຕະມານ ອັນມີໃນປະຕິສົນທິ ຍ່ອມຕິດຕາມ ຄື ໄປຕາມ ເປັນຜູ້ຕິດຕາມໄປດ້ວຍອຳນາດກຳມາພິສັງຂານນັ້ນ ໆ ເອງ

ຄຳວ່າ ສັດ ໄດ້ແກ່ ຜູ້ຂ້ອງ ຊົນ ນໍຣະຊົນ ມານົບ ບຸຣຸດ ບຸກຄົນ ຜູ້ມີຊີວິດ ຜູ້ເກີດ ສັດເກີດ ຜູ້ເປັນໄປຕາມກຳ ມະນຸດ ລວມຄວາມວ່າ ມານຍ່ອມຕິດຕາມສັດ ຍ້ອນສິ່ງທີ່ຢຶດຖືນັ້ນ ໆ ແລ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພັດທະຣາວຸດ)

ນໍຣະຊົນຄວນທຳລາຍເຄື່ອງຢຶດໝັ້ນທັງປວງ
ທັງຊັ້ນສູງ ຊັ້ນຕ່ຳແລະຊັ້ນກາງ
ຍ້ອນສັດທັງຫຼາຍເຂົ້າໄປຢຶດຖືຂັນໃດ ໆ ໃນໂລກ
ມານຍ່ອມຕິດຕາມສັດຍ້ອນສິ່ງທີ່ຢຶດຖືນັ້ນ ໆ ແລ

[ກຸລ] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ຍ້ອນແນວນັ້ນ ພິກຂຸເມື່ອຮູ້ແຈ້ງເພ່ງພິຈາລະນາໝູ່ສັດນີ້
ຜູ້ຕິດຢູ່ໃນບ້ວງແຫ່ງມັດຈຸຣາດວ່າ ເປັນຜູ້ຂ້ອງຢູ່ໃນເຄື່ອງຢຶດໝັ້ນ
ຄວນເປັນຜູ້ມີສະຕິ ບໍ່ເພິ່ງເຂົ້າໄປຢຶດຖືເຄື່ອງກັງວົນໃນໂລກທັງປວງ (໔)

ຄຳວ່າ ຍ້ອນແນວນັ້ນ ໃນຄຳວ່າ ຍ້ອນແນວນັ້ນ ພິກຂຸເມື່ອຮູ້ແຈ້ງຯລຯ ບໍ່ເພິ່ງເຂົ້າໄປຢຶດຖື ອະທິບາຍວ່າ ຍ້ອນແນວນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນ ພິກຂຸເມື່ອເບິ່ງເຫັນໂທດແຫ່ງຕັນຫາເຄື່ອງຢຶດໝັ້ນນີ້ ລວມຄວາມວ່າ ຍ້ອນແນວນັ້ນ

ຄຳວ່າ ເມື່ອຮູ້ແຈ້ງ ອະທິບາຍວ່າ ຮູ້ຢູ່ ຮູ້ແຈ້ງ ຮູ້ທົ່ວ ຮູ້ຊັດແຈ້ງ ຮູ້ສະເພາະ ແທງຕະຫຼອດຢູ່ ໄດ້ແກ່ ຮູ້ຢູ່ ຮູ້ແຈ້ງ ຮູ້ຊັດແຈ້ງ ຮູ້ສະເພາະ ແທງຕະຫຼອດຢູ່ວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ຄຳວ່າ ບໍ່ເພິ່ງເຂົ້າໄປຢຶດຖື ອະທິບາຍວ່າ ບໍ່ເພິ່ງຢຶດຖື ບໍ່ເພິ່ງເຂົ້າໄປຢຶດຖື ບໍ່ເພິ່ງຖື ບໍ່ເພິ່ງຢຶດໝັ້ນ ບໍ່ເພິ່ງຖືໝັ້ນຮູບ ຯລຯ ບໍ່ເພິ່ງຢຶດຖື ບໍ່ເພິ່ງເຂົ້າໄປຢຶດຖື ບໍ່ເພິ່ງຖື ບໍ່ເພິ່ງຢຶດໝັ້ນ ບໍ່ເພິ່ງຖືໝັ້ນ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ ຄະຕິ ຯລຯ ອຸປະບັດ ຯລຯ ປະຕິສົນທິ ຯລຯ ພົບ ຯລຯ ສົງສານ ຯລຯ ວັດຕະ ລວມຄວາມວ່າ ຍ້ອນແນວນັ້ນ ພິກຂຸເມື່ອຮູ້ແຈ້ງ ຯລຯ ບໍ່ເພິ່ງເຂົ້າໄປຢຶດຖື

ຄຳວ່າ ພິກຂຸ ໃນຄຳວ່າ ພິກຂຸ ຯລຯ ຄວນເປັນຜູ້ມີສະຕິ ຯລຯ ເຄື່ອງກັງວົນໃນໂລກທັງປວງ ໄດ້ແກ່ ພິກຂຸຜູ້ເປັນກັນລະຍານະປຸຖຸຊົນ ຫຼື ພິກຂຸຜູ້ເປັນເສຂະ

ຄຳວ່າ ຄວນເປັນຜູ້ມີສະຕິ ອະທິບາຍວ່າ ມີສະຕິດ້ວຍເຫດ ໔ ຢ່າງ ຄື (໑) ຊື່ວ່າມີ ສະຕິ ເມື່ອຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ ຯລຯ ພິກຂຸນັ້ນພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ຜູ້ມີສະຕິ ລວມຄວາມວ່າ ພິກຂຸ ຯລຯ ຄວນເປັນຜູ້ມີສະຕິ

ຄຳວ່າ ເຄື່ອງກັງວົນ ໄດ້ແກ່ ຂັນທີ່ເປັນຮູບ ເປັນເວທະນາ ເປັນສັນຍາ ເປັນສັງຂານ ເປັນວິນຍານໃດ ໆ

ຄຳວ່າ ໃນໂລກທັງປວງ ໄດ້ແກ່ ໃນອະບາຍໂລກທັງປວງ ໃນມະນຸດໂລກທັງປວງ ໃນເທວະໂລກທັງປວງ ໃນຂັນທະໂລກທັງປວງ ໃນທາດໂລກທັງປວງ ໃນອາຍະຕະນະໂລກທັງປວງ ລວມຄວາມວ່າ ພິກຂຸ ຯລຯ ຄວນເປັນຜູ້ມີສະຕິ ຯລຯ ເຄື່ອງກັງວົນ ໃນໂລກທັງປວງ

ຄຳວ່າ ເພ່ງພິຈາລະນາ ຯລຯ ວ່າເປັນຜູ້ຂ້ອງຢູ່ໃນເຄື່ອງຢຶດໝັ້ນ ອະທິບາຍວ່າ ຊົນເຫຼົ່າໃດຢຶດຖື ເຂົ້າໄປຢຶດຖື ຖື ຢຶດໝັ້ນ ຖືໝັ້ນຮູບ ຯລຯ ໄດ້ແກ່ ຍ່ອມຢຶດຖື ເຂົ້າໄປຢຶດຖື ຖື ຢຶດໝັ້ນ ຖືໝັ້ນ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ ຄະຕິ ຯລຯ ອຸປະບັດ ຯລຯ ປະຕິສົນທິ ຯລຯ ພົບ ຯລຯ ສົງສານ ຯລຯ ວັດຕະ ຊົນເຫຼົ່ານັ້ນຕັດຮຽກວ່າ ຜູ້ຂ້ອງຢູ່ໃນເຄື່ອງຢຶດໝັ້ນ

ຄຳວ່າ ວ່າ ເປັນຄຳສົນທິ ຯລຯ ຄຳວ່າ ວ່າ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ເພ່ງພິຈາລະນາ ໄດ້ແກ່ ເພ່ງພິຈາລະນາ ແນມເຫັນ ເບິ່ງເຫັນ ເຫັນ ແນມເບິ່ງ ເພ່ງພິນິດ ພິຈາລະນາ ລວມຄວາມວ່າ ເພ່ງພິຈາລະນາ ຯລຯ ວ່າເປັນຜູ້ຂ້ອງຢູ່ໃນເຄື່ອງຢຶດໝັ້ນ

ຄຳວ່າ ໝູ່ສັດ ໃນຄຳວ່າ ໝູ່ສັດນີ້ຜູ້ຕິດຢູ່ໃນບ້ວງແຫ່ງມັດຈຸຣາດ ເປັນຊື່ຂອງສັດ

ຄຳວ່າ ບ້ວງແຫ່ງມັດຈຸຣາດ ອະທິບາຍວ່າ ກິເລດ ຂັນ ແລະອະພິສັງຂານ ຮຽກວ່າ ບ້ວງແຫ່ງມັດຈຸຣາດ ໝູ່ສັດ ຂ້ອງ ຄື ຕິດ ກ່ຽວ ເກາະຕິດ ກ່ຽວພັນ ພົວພັນໃນບ້ວງແຫ່ງມັດຈຸຣາດ ຄື ບ້ວງແຫ່ງມານ ບ້ວງແຫ່ງມໍຣະນະ ອະທິບາຍວ່າ ສິ່ງຂອງທີ່ຂ້ອງ ຄື ຕິດ ກ່ຽວ ເກາະຕິດ ກ່ຽວພັນ ຕິດຕຶງຢູ່ທີ່ຕະປູຂ້າງຝາ ຫຼື ທີ່ເຄື່ອງແຂວນເຮັດດ້ວຍງາຊ້າງ ສັນໃດ ໝູ່ສັດ ຂ້ອງ ຄື ຕິດ ກ່ຽວ ເກາະຕິດ ກ່ຽວພັນ ພົວພັນໃນບ້ວງແຫ່ງມັດຈຸຣາດ ຄືບ້ວງແຫ່ງມານ ບ້ວງ

ແຫ່ງມໍຣະນະ ສັນນັ້ນ ລວມຄວາມວ່າ ໝູ່ສັດນີ້ຜູ້ຕິດຢູ່ໃນບ້ວງແຫ່ງມັດຈຸຣາດ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ຍ້ອນແນວນັ້ນ ພິກຂຸເມື່ອຮູ້ແຈ້ງເພ່ງພິຈາລະນາໝູ່ສັດນີ້
ຜູ້ຕິດຢູ່ໃນບ້ວງແຫ່ງມັດຈຸຣາດວ່າ ເປັນຜູ້ຂ້ອງຢູ່ໃນເຄື່ອງຢຶດໝັ້ນ
ຄວນເປັນຜູ້ມີສະຕິ ບໍ່ເພິ່ງເຂົ້າໄປຢຶດຖືເຄື່ອງກັງວົນໃນໂລກທັງປວງ

ພ້ອມກັບການຈົບຄາຖາ ໗ລ໗ ພັດທະຣາວຸດມານົບ ໗ລ໗ ໂດຍປະກາດວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ

**ພັດທະຣາວຸດມານະວະປັນຫານິດເທດທີ ໑໔ ຈົບ**

## ໑໕. ອຸທະຍະມານະວະປັນຫານິດເທດ

## ວ່າດ້ວຍປັນຫາຂອງອຸໄທມານົບ

[໗໔] (ທ່ານອຸໄທທູນຖາມ ດັ່ງນີ້)

ຂ້າພຣະອົງມີປັນຫາທີ່ຈະທູນຖາມ
ຈຶ່ງມາເຝົ້າພຣະອົງຜູ້ຊົງມີຊານ ປາສະຈາກທຸລີ
ປະທັບນັ່ງຢູ່ ຜູ້ຊົງເຮັດກິດສໍາເລັດແລ້ວ
ບໍ່ມີອາສະວະ ຊົງເຖິງຝັ່ງແຫ່ງທໍາທັງປວງ
ຂໍພຣະອົງໂຜດຕັດບອກອັນຍາວິໂມກ
ອັນເປັນເຄື່ອງທໍາລາຍອະວິດຊາດ້ວຍເທີ້ນ (໑)

ຄໍາວ່າ ຜູ້ຊົງມີຊານ ໃນຄໍາວ່າ ຜູ້ຊົງມີຊານ ປາສະຈາກທຸລີ ປະທັບນັ່ງຢູ່ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຜູ້ມີຊານ ຊື່ວ່າຊົງມີຊານ ດ້ວຍປະຖົມຊານແດ່ ດ້ວຍທຸຕິຍະຊານແດ່ ດ້ວຍຕະຕິຍະຊານແດ່ ດ້ວຍຈະຕຸດຖະຊານແດ່ ດ້ວຍຊານທີ່ມີວິຕົກ ແລະວິຈານເປັນອາລົມແດ່ ດ້ວຍຊານທີ່ບໍ່ມີວິຕົກມີພຽງວິຈານເປັນອາລົມແດ່ ດ້ວຍຊານທີ່ບໍ່ມີວິຕົກ ແລະວິຈານເປັນອາລົມແດ່ ດ້ວຍຊານທີ່ມີປິຕິເປັນອາລົມແດ່ ດ້ວຍຊານທີ່ບໍ່ມີປິຕິເປັນອາລົມແດ່ ດ້ວຍຊານທີ່ປະກອບດ້ວຍຄວາມແຊ່ມຊື່ນແດ່ ດ້ວຍຊານທີ່ປະກອບດ້ວຍອຸເປກຂາແດ່ ດ້ວຍຊານທີ່ເປັນສູນຍະຕະແດ່ ດ້ວຍຊານທີ່ເປັນອະນິມິດຕະແດ່ ດ້ວຍຊານທີ່ເປັນອັບປະນິຫິຕະແດ່ ດ້ວຍຊານທີ່ເປັນໂລກິຍະແດ່ ດ້ວຍຊານທີ່ເປັນໂລກຸດຕະຣະແດ່ ຄື ຊົງເປັນຜູ້ຍິນດີໃນຊານ ຊົງຂວນຂວາຍໃນຄວາມເປັນຜູ້ມີຈິດມີອາລົມໜຶ່ງດຽວ ຊົງໜັກໃນປະໂຫຍດຂອງພຣະອົງ ລວມຄວາມວ່າ ຜູ້ຊົງມີຊານ

# ວ່າດ້ວຍທຸລີ

ຄຳວ່າ ປາສະຈາກທຸລີ ອະທິບາຍວ່າ ຣາຄະ ຊື່ວ່າທຸລີ ໂທສະ ຊື່ວ່າທຸລີ ໂມຫະ ຊື່ວ່າທຸລີ ໂກທະ ຊື່ວ່າທຸລີ ອຸປະນາຫະ ຯລຯ ອະກຸສະລາພິສັງຂານທຸກປະເພດ ຊື່ວ່າທຸລີ ກິເລດທີ່ຮຽກວ່າທຸລີເຫຼົ່ານັ້ນ ພຣະຜູ້ມີພຣະພາກາພຸດທະເຈົ້າຊົງລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າ ບໍ່ມີທຸລີ ປາສະຈາກທຸລີ ຄື ບໍ່ມີທຸລີ ກຳຈັດທຸລີ ລະທຸລີໄດ້ ຫຼຸດພົ້ນທຸລີໄດ້ ກ້າວລ່ວງທຸລີທັງປວງສາແລ້ວ

ຣາຄະ ເຮົາຮຽກວ່າ ທຸລີ
ເຮົາບໍ່ຮຽກລະອອງຝຸ່ນວ່າ ເປັນທຸລີ
ຄຳວ່າ ທຸລີນີ້ ເປັນຊື່ຂອງຣາຄະ
ດັ່ງນັ້ນ ພຣະຊິນນະເຈົ້າຜູ້ມີພຣະຈັກຂຸ ຊົງລະທຸລີນັ້ນແລ້ວ
ຈຶ່ງຮຽກໄດ້ວ່າ ຜູ້ປາສະຈາກທຸລີ

ໂທສະ ເຮົາຮຽກວ່າ ທຸລີ
ເຮົາບໍ່ຮຽກລະອອງຝຸ່ນວ່າ ເປັນທຸລີ
ຄຳວ່າ ທຸລີນີ້ ເປັນຊື່ຂອງໂທສະ
ດັ່ງນັ້ນ ພຣະຊິນນະເຈົ້າຜູ້ມີພຣະຈັກຂຸ ຊົງລະທຸລີນັ້ນແລ້ວ
ຈຶ່ງຮຽກໄດ້ວ່າ ຜູ້ປາສະຈາກທຸລີ

ໂມຫະ ເຮົາຮຽກວ່າ ທຸລີ
ເຮົາບໍ່ຮຽກລະອອງຝຸ່ນວ່າ ເປັນທຸລີ
ຄຳວ່າ ທຸລີນີ້ ເປັນຊື່ຂອງໂມຫະ
ດັ່ງນັ້ນ ພຣະຊິນນະເຈົ້າຜູ້ມີພຣະຈັກຂຸ ຊົງລະທຸລີນັ້ນໄດ້ແລ້ວ
ຈຶ່ງຮຽກໄດ້ວ່າ ຜູ້ປາສະຈາກທຸລີ
ລວມຄວາມວ່າ ປາສະຈາກທຸລີ

ຄຳວ່າ ປະທັບນັ່ງຢູ່ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ປາສານະກະເຈດີ ລວມຄວາມວ່າ ປະທັບນັ່ງຢູ່ ພຣະສາວົກທັງຫຼາຍ ຜູ້ມີວິດຊາ ໓ ລະມັດຈຸໄດ້ ນັ່ງຫ້ອມລ້ອມພຣະມຸນີຜູ້ເຖິງຝັ່ງແຫ່ງທຸກ ປະທັບຢູ່ຂ້າງພູເຂົາ ພຣະຜູ້ມີພຣະພາກເຈົ້າຊື່ວ່າປະທັບນັ່ງຢູ່ແນວນີ້ແດ່

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າປະທັບນັ່ງຢູ່ ຍ້ອນຊົງເປັນຜູ້ສະຫງັດຈາກຄວາມຂວນຂວາຍທັງປວງແລ້ວ ຊົງຢູ່ໃນ (ອະຣິຍະວາສະທໍາ) ແລ້ວ ປະພຶດຈະຣະນະທໍາແລ້ວ ຯລຯ ພຣະອົງບໍ່ມີການວຽນເກີດ ວຽນແກ່ ວຽນຕາຍ (ແລະ) ພົບໃໝ່ກໍບໍ່ມີອີກ

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າ ປະທັບນັ່ງຢູ່ ແບວນີ້ແດ່ ລວມຄວາມວ່າ ຜູ້ຊົງມີຊານປາສະຈາກທຸລີ ປະທັບນັ່ງຢູ່

ຄໍາວ່າ ດັ່ງນີ້ ໃນຄໍາວ່າ ທ່ານອຸໄທທູນຖາມ ດັ່ງນີ້ ເປັນບົດສົນທິ ຯລຯ

ຄໍາວ່າ ທ່ານ ເປັນຄໍາກ່າວດ້ວຍຄວາມຮັກ ເປັນຄໍາກ່າວໂດຍຄວາມເຄົາລົບ ຯລຯ

ຄໍາວ່າ ອຸໄທ ເປັນຊື່ຂອງພາມນັ້ນ ຯລຯ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານອຸໄທທູນຖາມ ດັ່ງນີ້

ຄໍາວ່າ ຜູ້ຊົງເຮັດກິດສໍາເລັດແລ້ວ ບໍ່ມີອາສະວະ ອະທິບາຍວ່າ ກິດນ້ອຍໃຫຍ່ ຄື ກິດທີ່ຄວນເຮັດ ແລະບໍ່ຄວນເຮັດ ພຣະຜູ້ມີພຣະພາກພຸດທະເຈົ້າຊົງລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂື້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າ ຜູ້ຊົງເຮັດກິດສໍາເລັດແລ້ວ

ພິກຂຸຜູ້ບໍ່ມີທິດຖິທີ່ເຮັດໃຫ້ຕິກໄປ ຕັດກະແສຂາດແລ້ວ
ລະກິດນ້ອຍໃຫຍ່ໄດ້ແລ້ວ ຍ່ອມບໍ່ມີຄວາມຮ້ອນຮົນ

## ວ່າດ້ວຍອາສະວະ ໔

ຄໍາວ່າ ຊົງເຮັດກິດສໍາເລັດແລ້ວ ບໍ່ມີອາສະວະ ອະທິບາຍວ່າ

ຄໍາວ່າ ອາສະວະ ໄດ້ແກ່ ອາສະວະ ໔ ຢ່າງ ຄື

໑. ກາມາສະວະ
໒. ພະວາສະວະ
໓. ທິດຖາສະວະ
໔. ອະວິດຊາສະວະ

ອາສະວະເຫຼົ່ານັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂື້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າບໍ່ມີອາສະວະ ລວມຄວາມວ່າ ຜູ້ຊົງເຮັດກິດສໍາເລັດແລ້ວບໍ່ມີອາສະວະ

ຄໍາວ່າ ຊົງເຖິງຝັ່ງແຫ່ງທໍາທັງປວງ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊົງເຖິງຝັ່ງໄດ້ດ້ວຍຄວາມຮູ້ຍິ່ງ ເຖິງຝັ່ງໄດ້ດ້ວຍການກໍານົດຮູ້ ເຖິງຝັ່ງໄດ້ດ້ວຍການລະ ເຖິງຝັ່ງໄດ້ດ້ວຍການ

ຈະເລີນພາວະນາ ເຖິງຝັ່ງໄດ້ດ້ວຍການເຮັດໃຫ້ແຈ້ງ ເຖິງຝັ່ງໄດ້ດ້ວຍການເຂົ້າສະມາບັດ ເຖິງຝັ່ງໄດ້ດ້ວຍຄວາມຮູ້ຍິ່ງທຳທັງປວງ ເຖິງຝັ່ງໄດ້ດ້ວຍການກຳນົດຮູ້ທຸກທັງປວງ ເຖິງຝັ່ງໄດ້ດ້ວຍການລະກິເລດທັງປວງ ເຖິງຝັ່ງໄດ້ດ້ວຍການຈະເລີນອະຣິຍະມັກ ໔ ເຖິງຝັ່ງໄດ້ດ້ວຍການເຮັດໃຫ້ແຈ້ງນິໂຣດ ເຖິງຝັ່ງໄດ້ດ້ວຍການເຂົ້າເຖິງສະມາບັດ ໗

ພຣະອົງຊົງເຖິງຄວາມຊຳນານ ບັນລຸປາຣະມີໃນອະຣິຍະສີນ ຊົງເຖິງຄວາມຊຳນານ ບັນລຸປາຣະມີໃນອະຣິຍະສະມາທິ ຊົງເຖິງຄວາມຊຳນານ ບັນລຸປາຣະມີໃນອະຣິຍະປັນຍາ ຊົງເຖິງຄວາມຊຳນານ ບັນລຸປາຣະມີໃນອະຣິຍະວິມຸດຕິ

ພຣະອົງຊົງເຖິງຝັ່ງ ບັນລຸຝັ່ງ ເຖິງສ່ວນສຸດ ບັນລຸສ່ວນສຸດ ເຖິງປາຍສຸດ ບັນລຸປາຍສຸດ ເຖິງທ້າຍສຸດ ບັນລຸທ້າຍສຸດ ເຖິງຄວາມສຳເລັດ ບັນລຸຄວາມສຳເລັດ ເຖິງບ່ອນປົກປ້ອງ ບັນລຸບ່ອນປົກປ້ອງ ເຖິງບ່ອນຫຼົບຫຼີກ ບັນລຸບ່ອນຫຼົບຫຼີກ ເຖິງບ່ອນເພິ່ງ ບັນລຸບ່ອນເພິ່ງ ເຖິງບ່ອນບໍ່ມີໄພ ບັນລຸບ່ອນບໍ່ມີໄພ ເຖິງບ່ອນບໍ່ຈຸຕິ ບັນລຸບ່ອນບໍ່ຈຸຕິ ເຖິງບ່ອນບໍ່ຕາຍ ບັນລຸບ່ອນບໍ່ຕາຍ ເຖິງບ່ອນດັບ ບັນລຸບ່ອນດັບ ພຣະຜູ້ມີພຣະພາກເຈົ້ານັ້ນຊົງຢູ່ໃນ (ອະຣິຍະວາສະທຳ) ແລ້ວ ປະພຶດຈະຣະນະທຳແລ້ວ ໗ລ໗ ພຣະອົງບໍ່ມີການວຽນເກີດ ວຽນແກ່ ວຽນຕາຍ ແລະພົບໃໝ່ກໍບໍ່ມີອີກ ລວມຄວາມວ່າ ຊົງເຖິງຝັ່ງແຫ່ງທຳທັງປວງ

ຄຳວ່າ ຂ້າພຣະອົງມີບັນຫາທີ່ຈະທູນຖາມຈຶ່ງມາເຝົ້າ ອະທິບາຍວ່າ ຂ້າພຣະອົງມີຄວາມຕ້ອງການດ້ວຍບັນຫາຈຶ່ງມາເຝົ້າແລ້ວ ຄື ປາຖະໜາຈະທູນຖາມບັນຫາ ຈຶ່ງມາເຝົ້າແລ້ວ ມີຄວາມປາຖະໜາຈະຟັງບັນຫາຈຶ່ງມາເຝົ້າແລ້ວ ລວມຄວາມວ່າ ຂ້າພຣະອົງມີບັນຫາທີ່ຈະທູນຖາມຈຶ່ງມາເຝົ້າ ແນວນີ້ແດ່

ອີກໄນໜຶ່ງ ການມາເຝົ້າ ການກ້າວຍ່າງເຂົ້າເຝົ້າ ການເຂົ້າໄປເຝົ້າ ການເຂົ້າໄປນັ່ງໃກ້ເພິ່ງມີແກ່ຜູ້ຕ້ອງການບັນຫາ ຄື ຜູ້ປາຖະໜາຈະຖາມບັນຫາ ຜູ້ປາຖະໜາຈະຟັງບັນຫາ ລວມຄວາມວ່າ ຂ້າພຣະອົງມີບັນຫາທີ່ຈະທູນຖາມຈຶ່ງມາເຝົ້າ ແນວນີ້ແດ່

ອີກໄນໜຶ່ງ ພຣະອົງຊົງມີອາຄົມ (ແຫຼ່ງຄວາມຮູ້) ແຫ່ງບັນຫາ ທັງພຣະອົງຊົງອົງອາດຊົງສາມາດທີ່ຈະຕັດບອກ ຄື ວິສັດຊະນາບັນຫາ ທີ່ຂ້າພຣະອົງທູນຖາມ ຂໍ້ນີ້ເປັນພາຣະຂອງພຣະອົງ ລວມຄວາມວ່າ ຂ້າພຣະອົງມີບັນຫາທີ່ຈະທູນຖາມ ຈຶ່ງມາເຝົ້າແນວນີ້ແດ່

ຄຳວ່າ ຂໍພຣະອົງໂຜດຕັດບອກອັນຍາວິໂມກ ອະທິບາຍວ່າ ຄວາມຫຼຸດພົ້ນດ້ວຍອະຣະຫັນຕະຜົນ ຕັດຮຽກວ່າ ອັນຍາວິໂມກ ຂໍພຣະອົງໂຜດຕັດ ຄື ໂຜດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດຄວາມຫຼຸດພົ້ນດ້ວຍອະຣະຫັນຕະຜົນດ້ວຍເທີ້ນ ລວມຄວາມວ່າ ຂໍພຣະອົງໂຜດຕັດບອກອັນຍາວິໂມກ

ຄຳວ່າ ອັນເປັນເຄື່ອງທຳລາຍອະວິດຊາດ້ວຍເທີ້ນ ອະທິບາຍວ່າ ອັນເປັນເຄື່ອງສະຫຼາຍ ເປັນເຄື່ອງທຳລາຍ ຄື ເປັນການລະ ການເຂົ້າໄປສະງົບ ການສະລັດຖິ້ມ ການຣະງັບອະວິດຊາໄດ້ ເປັນອະມະຕະນິບພານ ລວມຄວາມວ່າ ອັນເປັນເຄື່ອງທຳລາຍອະວິດຊາດ້ວຍເທີ້ນ ເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

(ທ່ານອຸໄທທູນຖາມ ດັ່ງນີ້)

ຂ້າພຣະອົງມີບັນຫາທີ່ຈະທູນຖາມ
ຈຶ່ງມາເຝົ້າພຣະອົງຜູ້ຊົງມີຊານ ປາສະຈາກທຸລີ
ປະທັບນັ່ງຢູ່ ຜູ້ຊົງເຮັດກິດສຳເລັດແລ້ວ
ບໍ່ມີອາສະວະ ຊົງເຖິງຝັ່ງແຫ່ງທຳທັງປວງ
ຂໍພຣະອົງໂຜດຕັດບອກອັນຍາວິໂມກ
ອັນເປັນເຄື່ອງທຳລາຍອະວິດຊາດ້ວຍເທີ້ນ

[໗໕] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸໄທ)

ເຮົາຈະບອກອັນຍາວິໂມກ
ອັນເປັນເຄື່ອງລະຄວາມພໍໃຈ
ໃນການແລະໂທມະນັດທັງ ໒ ຢ່າງ
ເປັນເຄື່ອງບັນເທົາຄວາມທໍ້ທໍ້
ແລະເປັນເຄື່ອງກັ້ນຄວາມຄະນອງ (໔)

ຄຳວ່າ ອັນເປັນເຄື່ອງລະຄວາມພໍໃຈໃນການ ອະທິບາຍວ່າ

ຄຳວ່າ ຄວາມພໍໃຈ ໄດ້ແກ່ ຄວາມພໍໃຈດ້ວຍອຳນາດຄວາມຕ້ອງການ ຄວາມກຳໜັດດ້ວຍອຳນາດຄວາມຕ້ອງການ ຄວາມເພີດເພີນດ້ວຍອຳນາດຄວາມຕ້ອງການ ຄວາມທະຍານຢາກດ້ວຍອຳນາດຄວາມຕ້ອງການ ຄວາມເຍື່ອໃຍດ້ວຍອຳນາດຄວາມຕ້ອງການ ຄວາມກະຫາຍດ້ວຍອຳນາດຄວາມຕ້ອງການ ຄວາມຮ້ອນຮົນດ້ວຍອຳນາດຄວາມຕ້ອງການ ຄວາມສະຍົບດ້ວຍອຳນາດຄວາມຕ້ອງການ ຄວາມຕິດໃຈດ້ວຍອຳນາດຄວາມຕ້ອງການໃນການທັງຫຼາຍ ຫ້ວງນ້ຳຄືຄວາມຕ້ອງການ ກິເລດເປັນເຄື່ອງປະກອບຄືຄວາມຕ້ອງການ ກິເລດເຄື່ອງຢຶດໝັ້ນຄືຄວາມຕ້ອງການ ກິເລດເຄື່ອງກັ້ນຈິດຄືຄວາມພໍໃຈດ້ວຍອຳນາດຄວາມຕ້ອງການໃນການທັງຫຼາຍ

ຄຳວ່າ ອັນເປັນເຄື່ອງລະຄວາມພໍໃຈໃນການ ອະທິບາຍວ່າ ອັນເປັນເຄື່ອງລະ ຄື ເປັນເຄື່ອງເຂົ້າໄປສະງົບ ສະລັດຖິ້ມ ຣະງັບຄວາມພໍໃຈໃນການໄດ້ ເປັນອະມະຕະນິບພານ ລວມຄວາມວ່າ ອັນເປັນເຄື່ອງລະຄວາມພໍໃຈໃນການ

ຄຳວ່າ ອຸໄທ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸໄທ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸໄທ

ຄຳວ່າ ໂທມະນັດ ໃນຄຳວ່າ ແລະໂທມະນັດທັງ ໒ ຢ່າງ ອະທິບາຍວ່າ ຄວາມບໍ່ແຊ່ມຊື່ນທາງໃຈ ຄວາມທຸກທາງໃຈ ຄວາມສະເຫວີຍອາລົມເປັນທຸກອັນບໍ່ແຊ່ມຊື່ນ ເກີດຈາກສຳຜັດທາງໃຈ ທຸກຂະເວທະນາອັນບໍ່ແຊ່ມຊື່ນເກີດຈາກສຳຜັດທາງໃຈ

ຄຳວ່າ ແລະໂທມະນັດທັງ ໒ ຢ່າງ ອະທິບາຍວ່າ ການລະ ການເຂົ້າໄປສະງົບ ການສະລັດຖິ້ມ ກາຣະງັບຄວາມພໍໃຈໃນກາມແລະໂທມະນັດທັງ ໒ ຢ່າງໄດ້ ເປັນອະມະຕະນິບພານ ລວມຄວາມວ່າ ແລະໂທມະນັດທັງ ໒ ຢ່າງ

ຄຳວ່າ ຄວາມຫຍໍ້ທໍ້ ໃນຄຳວ່າ ເປັນເຄື່ອງບັນເທົາຄວາມຫຍໍ້ທໍ້ ອະທິບາຍວ່າ ຄວາມທີ່ຈິດບໍ່ຄ່ອງແຄ່ວ ຄວາມທີ່ຈິດບໍ່ຄວນແກ່ການງານ ຄວາມຫົດຫູ່ ກິຣິຍາທີ່ຫົດຫູ່ ຄວາມທໍ້ຖອຍ ກິຣິຍາທີ່ທໍ້ຖອຍ ພາວະທີ່ທໍ້ຖອຍ ຄວາມຫຍໍ້ທໍ້ ກິຣິຍາທີ່ຫຍໍ້ທໍ້ ຄວາມເປັນຜູ້ມີຈິດຫຍໍ້ທໍ້

ຄຳວ່າ ເປັນເຄື່ອງບັນເທົາ ໄດ້ແກ່ ເປັນເຄື່ອງບັນເທົາ ຄື ເປັນເຄື່ອງລະ ເປັນເຄື່ອງເຂົ້າໄປສະງົບ ສະລັດຖິ້ມ ຣະງັບຄວາມຫຍໍ້ທໍ້ໄດ້ ເປັນອະມະຕະນິບພານ ລວມຄວາມວ່າ ເປັນເຄື່ອງບັນເທົາຄວາມຫຍໍ້ທໍ້

## ວ່າດ້ວຍຄວາມຄະນອງ

ຄຳວ່າ ຄວາມຄະນອງ ໃນຄຳວ່າ ແລະເປັນເຄື່ອງກັ້ນຄວາມຄະນອງ ອະທິບາຍວ່າ ຄວາມຄະນອງມື ຊື່ວ່າຄວາມຄະນອງ ຄວາມຄະນອງຕີນ ຊື່ວ່າຄວາມຄະນອງ ຄວາມຄະນອງມືແລະຕີນ ກໍຊື່ວ່າຄວາມຄະນອງ ຄວາມສຳຄັນໃນສິ່ງທີ່ບໍ່ຄວນວ່າຄວນ ຄວາມສຳຄັນໃນສິ່ງທີ່ຄວນວ່າບໍ່ຄວນ ຯລຯ ຄວາມສຳຄັນໃນສິ່ງທີ່ມີໂທດວ່າບໍ່ມີໂທດ ຄວາມສຳຄັນໃນສິ່ງທີ່ບໍ່ມີໂທດວ່າມີໂທດ ຄວາມຄະນອງ ກິຣິຍາທີ່ຄະນອງ ພາວະທີ່ຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຄະນອງ

ອີກໄນໜຶ່ງ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນຍ້ອນເຫດ ໒ ຢ່າງ ຄື (໑) ຍ້ອນເຮັດ (໒) ຍ້ອນບໍ່ເຮັດ

ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນຍ້ອນເຮັດ ແລະຍ້ອນບໍ່ເຮັດເປັນແນວໃດ

ຄື ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນວ່າ ເຮົາເຮັດແຕ່ກາຍທຸດຈະຣິດ ບໍ່ເຮັດກາຍສຸດຈະຣິດ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນວ່າ ເຮົາເຮັດແຕ່ວະຈີທຸດຈະຣິດ ບໍ່ເຮັດວະຈີສຸດຈະຣິດ ເຮົາເຮັດແຕ່ມະໂນທຸດຈະຣິດ ບໍ່ເຮັດມະໂນ

ສຸດຈະຣິດ ເຮົາເຮັດແຕ່ປານາຕິບາດ ບໍ່ເຮັດຄວາມງົດເວັ້ນຈາກປານາຕິບາດ ໆລໆ ເຮົາເຮັດແຕ່ອະທິນນາທານ ບໍ່ເຮັດຄວາມງົດເວັ້ນຈາກອະທິນນາທານ ໆລໆ ເຮົາເຮັດແຕ່ກາເມສຸມິດສາຈານ ບໍ່ເຮັດຄວາມງົດເວັ້ນຈາກກາເມສຸມິດສາຈານ ໆລໆ ເຮົາເຮັດແຕ່ມຸສາວາດ ບໍ່ເຮັດຄວາມງົດເວັ້ນຈາກມຸສາວາດ ໆລໆ ເຮົາເຮັດແຕ່ປິສຸນາວາຈາ ບໍ່ເຮັດຄວາມງົດເວັ້ນຈາກປິສຸນາວາຈາ ໆລໆ ເຮົາເຮັດແຕ່ ຜະຣຸສະວາຈາບໍ່ເຮັດຄວາມງົດເວັ້ນຈາກຜະຣຸສະວາຈາ ໆລໆ ເຮົາເຮັດແຕ່ສຳຜັບປະລາປະ ບໍ່ເຮັດຄວາມງົດເວັ້ນຈາກສຳຜັບປະລາປະ ໆລໆ ເຮົາເຮັດແຕ່ອະພິດຊາ ບໍ່ເຮັດອະນະພິດຊາ ໆລໆ ເຮົາເຮັດແຕ່ພະຍາບາດ ບໍ່ເຮັດອັບພະຍາບາດ ໆລໆ ເຮົາເຮັດແຕ່ມິດສາທິດຖິ ບໍ່ເຮັດສຳມາທິດຖິ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນຍ້ອນເຮັດ ແລະຍ້ອນບໍ່ເຮັດ ເປັນແນວນີ້

ອີກໃນໜຶ່ງ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນວ່າ ເຮົາບໍ່ໄດ້ຮັກສາສິນໃຫ້ບໍລິບູນ ຄວາມຄະນອງ ຄວາມເດືອດຮ້ອນຈິດ ໃຈຟຸ້ງຊ່ານ ເກີດຂຶ້ນວ່າ ເຮົາບໍ່ສັງລວມໃນອິນຊີທັງ ໖ ໆລໆ ບໍ່ຮູ້ຈັກປະມານໃນການບໍຣິໂພກອາຫານ ໆລໆ ບໍ່ປະກອບຄວາມພຽນເປັນເຄື່ອງຕື່ນຢູ່ສະເໝີ ໆລໆ ບໍ່ໝັ່ນປະກອບສະຕິສຳປະຊັນຍະ ໆລໆ ບໍ່ຈະເລີນສະຕິປັດຖານ ໔ ໆລໆ ບໍ່ຈະເລີນສຳມັບປະທານ ໔ ໆລໆ ບໍ່ຈະເລີນອິດທິບາດ ໔ ໆລໆ ບໍ່ຈະເລີນອິນຊີ ໕ ໆລໆ ບໍ່ຈະເລີນພະລະ ໕ ໆລໆ ບໍ່ຈະເລີນໂພດຊົງ ໗ ໆລໆ ບໍ່ຈະເລີນອະຣິຍະມັກມີອົງ ໘ ໆລໆ ບໍ່ກຳນົດຮູ້ທຸກ ບໍ່ລະສະມຸໄທ ບໍ່ຈະເລີນມັກ ເຮົາບໍ່ເຮັດນິໂຣດໃຫ້ປະຈັກແຈ້ງ

ຄຳວ່າ ແລະເປັນເຄື່ອງກັ້ນຄວາມຄະນອງ ອະທິບາຍວ່າ ເຄື່ອງປິດ ເຄື່ອງກັ້ນ ຄື ການລະການເຂົ້າໄປສະງົບ ການສະລັດຖິ້ມ ການຣະງັບຄວາມຄະນອງໄດ້ ເປັນອະມະຕະນິບພານ ລວມຄວາມວ່າ ແລະເປັນເຄື່ອງກັ້ນຄວາມຄະນອງ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸໄທ)

ເຮົາຈະບອກອັນຍາວິໂມກ
ອັນເປັນເຄື່ອງລະຄວາມພໍໃຈ
ໃນກາມແລະໂທມະນັດທັງ ໔ ຢ່າງ
ເປັນເຄື່ອງບັນເທົາຄວາມທໍ້ຖໍ້
ແລະເປັນເຄື່ອງກັ້ນຄວາມຄະນອງ

[໗໖] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ເຮົາຈະບອກອັນຍາວິໂມກທີ່ບໍລິສຸດ
ຍ້ອນມີອຸເປກຂາແລະສະຕິ ທີ່ມີທຳຕັກກະເປັນເບື້ອງຕົ້ນ
ເປັນເຄື່ອງທຳລາຍອະວິດຊາ (໓)

ຄຳວ່າ ອຸເປກຂາ ໃນຄຳວ່າ ທີ່ບໍລິສຸດຍ້ອນມີອຸເປກຂາແລະສະຕິ ໄດ້ແກ່ ອຸເປກຂາ ຄື ຄວາມເພີກເສີຍ ຄວາມເພີກເສີຍຢ່າງຍິ່ງ ຄວາມທີ່ຈິດສະງົບ ຄວາມທີ່ຈິດສະຫງັດ ຄວາມທີ່ຈິດເປັນກາງໃນຈະຕຸດຖະຊານ

ຄຳວ່າ ສະຕິ ໄດ້ແກ່ ສະຕິ ຄື ຄວາມຣະລຶກເຖິງ ໆລໆ ສຳມາສະຕິ ຜາຣິບອຸເປກຂາໃນຈະຕຸດຖະຊານ

ຄຳວ່າ ທີ່ບໍລິສຸດຍ້ອນມີອຸເປກຂາແລະສະຕິ ອະທິບາຍວ່າ ອຸເປກຂາ ແລະສະຕິໃນຈະຕຸດຖະຊານ ສະອາດ ຄື ມົດຈິດ ບໍລິສຸດ ສະອາດພ້ອມ ຜຸດຜ່ອງ ບໍ່ມີກິເລດເຄື່ອງຍົ່ວຍຸປາສະຈາກອຸປະກິເລດ ອ່ອນໂຍນ ຄວນແກ່ການງານ ຕັ້ງໝັ້ນ ເຖິງຄວາມບໍ່ຫວັ່ນໄຫວ ລວມຄວາມວ່າ ທີ່ບໍລິສຸດຍ້ອນມີອຸເປກຂາ ແລະສະຕິ

ຄຳວ່າ ທີ່ມີທຳຕັກກະເປັນເບື້ອງຕົ້ນ ອະທິບາຍວ່າ ສຳມາສັງກັບປະ ຕັດຮຽກວ່າ ທຳຕັກສຳມາສັງກັບປະນັ້ນ ເປັນເບື້ອງຕົ້ນ ຄື ເປັນເບື້ອງໜ້າ ເປັນຫົວໜ້າແຫ່ງ ອັນຍາວິໂມກ ລວມຄວາມວ່າ ທີ່ມີທຳຕັກກະເປັນເບື້ອງຕົ້ນ ແນວນີ້ແດ່

ອີກໄນໜຶ່ງ ສຳມາທິດຖິຕັດຮຽກວ່າ ທຳຕັກ ສຳມາທິດຖິນັ້ນ ເປັນເບື້ອງຕົ້ນ ຄື ເປັນເບື້ອງໜ້າ ເປັນຫົວໜ້າແຫ່ງອັນຍາວິໂມກ ລວມຄວາມວ່າ ທີ່ມີທຳຕັກກະເປັນເບື້ອງຕົ້ນ ແນວນີ້ແດ່

ຄຳວ່າ ເຮົາຈະບອກອັນຍາວິໂມກ ອະທິບາຍວ່າ ຄວາມຫຼຸດພົ້ນດ້ວຍອະຣະຫັນຕະຜົນຕັດຮຽກວ່າ ອັນຍາວິໂມກ ເຮົາຈະບອກ ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດຄວາມຫຼຸດພົ້ນດ້ວຍອະຣະຫັນຕະຜົນ ລວມຄວາມວ່າ ເຮົາຈະບອກອັນຍາວິໂມກ

ຄຳວ່າ ອະວິດຊາ ໃນຄຳວ່າ ເປັນເຄື່ອງລຳລາຍອະວິດຊາ ອະທິບາຍວ່າ ຄວາມບໍ່ຮູ້ໃນທຸກ ໆລໆ ອະວິດຊາ ອະກຸສົນມູນຄືໂມຫະ

ຄຳວ່າ ເປັນເຄື່ອງທຳລາຍ ອະທິບາຍວ່າ ເປັນເຄື່ອງສະຫຼາຍ ເປັນເຄື່ອງທຳລາຍ ຄື ການລະ ການເຂົ້າໄປສະງົບ ການສະລັດຖິ້ມ ການຣະງັບອະວິດຊາໄດ້ ເປັນອະມະຕະນິບພານ ລວມຄວາມວ່າ ເປັນເຄື່ອງທຳລາຍອະວິດຊາ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ເຮົາຈະບອກອັນຍາວິໂມກທີ່ບໍລິສຸດ
ຍ້ອນມີອຸເປກຂາແລະສະຕິ ທີ່ມີທຳຕັກກະເປັນເບື້ອງຕົ້ນ
ເປັນເຄື່ອງທຳລາຍອະວິດຊາ

[໗໗] (ທ່ານອຸໄທທູນຖາມວ່າ)

ສັດໂລກມີອັນໃດເປັນເຄື່ອງປະກອບໄວ້
ອັນໃດນໍເປັນເຫດທ່ຽວໄປຂອງສັດໂລກນັ້ນ
ຍ້ອນລະອັນໃດໄດ້ນໍ ພຣະອົງຈຶ່ງຕັດວ່າ ນິບພານ (໔)

ຄໍາວ່າ ສັດໂລກມີອັນໃດເປັນເຄື່ອງປະກອບໄວ້ ອະທິບາຍວ່າ ອັນໃດເປັນເຄື່ອງປະກອບ ຄື ເຄື່ອງກ່ຽວຂ້ອງ ເຄື່ອງຜູກພັນ ເຄື່ອງເສົ້າໝອງຂອງສັດໂລກ ໂລກຖືກອັນໃດ ປະກອບ ປະກອບທົ່ວ ປະກອບທົ່ວເຖິງ ປະກອບພ້ອມ ເກາະຕິດ ກ່ຽວຂ້ອງ ພົວພັນໄວ້ ລວມຄວາມວ່າ ສັດໂລກມີອັນໃດເປັນເຄື່ອງປະກອບໄວ້

ຄໍາວ່າ ອັນໃດນໍ ເປັນເຫດທ່ຽວໄປຂອງສັດໂລກນັ້ນ ອະທິບາຍວ່າ ອັນໃດນໍ ເປັນເຄື່ອງສັນຈອນ ທ່ຽວໄປ ຄື ທ່ອງທ່ຽວໄປຂອງສັດໂລກນັ້ນ ຄື ໂລກສັນຈອນໄປ ທ່ຽວໄປ ທ່ອງທ່ຽວໄປດ້ວຍອັນໃດ ລວມຄວາມວ່າ ອັນໃດນໍ ເປັນເຫດທ່ຽວໄປຂອງສັດໂລກນັ້ນ

ຄໍາວ່າ ຍ້ອນລະອັນໃດໄດ້ນໍ ພຣະອົງຈຶ່ງຕັດວ່າ ນິບພານ ອະທິບາຍວ່າ ຍ້ອນລະ ຄື ຍ້ອນເຂົ້າໄປສະງົບ ຍ້ອນສະລັດຖິ້ມ ຍ້ອນຣະງັບອັນໃດໄດ້ນໍ ພຣະອົງຈຶ່ງຕັດຮຽກ ຄື ກ່າວ ເວົ້າ ບອກ ສະແດງ ຊີ້ແຈ່ງວ່ານິບພານ ລວມຄວາມວ່າ ຍ້ອນລະອັນໃດໄດ້ນໍ ພຣະອົງຈຶ່ງຕັດວ່າ ນິບພານ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ສັດໂລກມີອັນໃດເປັນເຄື່ອງປະກອບໄວ້
ອັນໃດນໍ ເປັນເຫດທ່ຽວໄປຂອງສັດໂລກນັ້ນ
ຍ້ອນລະອັນໃດໄດ້ນໍ ພຣະອົງຈຶ່ງຕັດວ່າ ນິບພານ

[ກຼ] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ສັດໂລກມີຄວາມເພີດເພີນເປັນເຄື່ອງປະກອບໄວ້
ຄວາມນຶກເປັນເຫດທ່ຽວໄປຂອງສັດໂລກນັ້ນ
ຍ້ອນລະຕັນຫາໄດ້ ເຮົາຈຶ່ງຮຽກວ່າ ນິບພານ (໕)

ຄໍາວ່າ ສັດໂລກມີຄວາມເພີດເພີນເປັນເຄື່ອງປະກອບໄວ້ ອະທິບາຍວ່າ ຕັນຫາ ຕັດຮຽກວ່າ ຄວາມເພີດເພີນ ໄດ້ແກ່ ຄວາມກໍາໜັດ ຄວາມກໍາໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ ນີ້ຕັດຮຽກວ່າ ຄວາມເພີດເພີນ ໄດ້ແກ່ ຄວາມເພີດເພີນທີ່ເປັນເຄື່ອງປະກອບ ເປັນເຄື່ອງກ່ຽວຂ້ອງ ເປັນເຄື່ອງຜູກພັນ ເປັນເຄື່ອງເສົ້າໝອງຂອງສັດໂລກ ສັດໂລກຖືກຄວາມເພີດເພີນນີ້ປະກອບ ປະກອບທົ່ວ ປະກອບທົ່ວເຖິງ ປະກອບພ້ອມ ເກາະຕິດ ກ່ຽວຂ້ອງ ພົວພັນໄວ້ ລວມຄວາມວ່າ ສັດໂລກມີຄວາມເພີດເພີນເປັນເຄື່ອງປະກອບໄວ້

## ວ່າດ້ວຍຄວາມນຶກ ໙ ຢ່າງ

ຄໍາວ່າ ຄວາມນຶກ ໃນຄໍາວ່າ ຄວາມນຶກເປັນເຫດທ່ຽວໄປຂອງສັດໂລກນັ້ນ ໄດ້ແກ່ ຄວາມນຶກ ໙ ຢ່າງ ຄື

໑. ຄວາມນຶກໃນກາມ
໒. ຄວາມນຶກໃນຄວາມພະຍາບາດ
໓. ຄວາມນຶກໃນຄວາມບຽດບຽນ
໔. ຄວາມນຶກເຖິງຍາດພີ່ນ້ອງ
໕. ຄວາມນຶກເຖິງຊົນນະບົດ
໖. ຄວາມນຶກເຖິງເທບພະເຈົ້າ
໗. ຄວາມນຶກກ່ຽວເນື່ອງດ້ວຍຄວາມເປັນຜູ້ອີດູຜູ້ອື່ນ
໘. ຄວາມນຶກກ່ຽວເນື່ອງດ້ວຍລາບສັກກາຣະແລະຄວາມສັນເສີນ
໙. ຄວາມນຶກກ່ຽວເນື່ອງດ້ວຍຄວາມບໍ່ຖືກດູໝິ່ນ

ເຫຼົ່ານີ້ຮຽກວ່າ ຄວາມນຶກ ໙ ຢ່າງ ຄວາມນຶກ ໙ ຢ່າງເຫຼົ່ານີ້ ເປັນເຫດສັນຈອນ ທ່ຽວໄປ ຄື ທ່ອງທ່ຽວໄປຂອງສັດໂລກ ຄື ສັດໂລກສັນຈອນໄປ ທ່ຽວໄປ ທ່ອງທ່ຽວໄປ ດ້ວຍຄວາມນຶກ ໙ ຢ່າງເຫຼົ່ານີ້ ລວມຄວາມວ່າ ຄວາມນຶກເປັນເຫດທ່ຽວໄປຂອງສັດໂລກນັ້ນ

ຄຳວ່າ ຕັນຫາ ໃນຄຳວ່າ ຍ້ອນລະຕັນຫາໄດ້ເຮົາຈຶ່ງຮຽກວ່ານິບພານ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ

ຄຳວ່າ ຍ້ອນລະຕັນຫາໄດ້ເຮົາຈຶ່ງຮຽກວ່າ ນິບພານ ອະທິບາຍວ່າ ຍ້ອນລະ ຄື ຍ້ອນເຂົ້າໄປສະງົບ ຍ້ອນສະລັດຖິ້ມ ຍ້ອນຣະງັບຕັນຫາໄດ້ ເຮົາຈຶ່ງຮຽກ ຄື ກ່າວ ເວົ້າ ບອກ ສະແດງ ຊີ້ແຈ່ງວ່າ ນິບພານ ລວມຄວາມວ່າ ຍ້ອນລະຕັນຫາໄດ້ເຮົາຈຶ່ງຮຽກວ່າ ນິບພານ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ສັດໂລກມີຄວາມເພີດເພີນເປັນເຄື່ອງປະກອບໄວ້
ຄວາມນຶກເປັນເຫດທ່ຽວໄປຂອງສັດໂລກນັ້ນ
ຍ້ອນລະຕັນຫາໄດ້ເຮົາຈຶ່ງຮຽກວ່າ ນິບພານ

[໗໙] (ທ່ານອຸໄທທູນຖາມວ່າ)

ຂ້າພຣະອົງມາເຝົ້າເພື່ອທູນຖາມພຣະຜູ້ມີພຣະພາກເຈົ້າວ່າ
ສັດໂລກມີສະຕິທ່ຽວໄປຢູ່ແນວໃດ ວິນຍານຈຶ່ງດັບສະນິດ
ຂໍຟັງພຣະດຳຣັດນັ້ນຂອງພຣະອົງ (໖)

ຄຳວ່າ ສັດໂລກມີສະຕິທ່ຽວໄປຢູ່ແນວໃດ ອະທິບາຍວ່າ ສັດໂລກມີສະຕິສຳປະຊັນຍະທ່ຽວໄປ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປແນວໃດ ລວມຄວາມວ່າ ສັດໂລກມີສະຕິທ່ຽວໄປຢູ່ແນວໃດ

ຄຳວ່າ ວິນຍານຈຶ່ງດັບສະນິດ ອະທິບາຍວ່າ ວິນຍານຈຶ່ງດັບ ຄື ເຂົ້າໄປສະງົບ ເຖິງການຕັ້ງຢູ່ບໍ່ໄດ້ ຣະງັບໄປ ລວມຄວາມວ່າ ວິນຍານຈຶ່ງດັບສະນິດ

ຄຳວ່າ ຂ້າພຣະອົງມາເຝົ້າເພື່ອທູນຖາມພຣະຜູ້ມີພຣະພາກເຈົ້າ ອະທິບາຍວ່າ ພວກຂ້າພຣະອົງມາເຝົ້າ ຄື ເປັນຜູ້ມາເຝົ້າແລ້ວ ມາເຂົ້າເຝົ້າແລ້ວ ມາເຖິງ ເຖິງພ້ອມແລ້ວ ເປັນຜູ້ມາເຖິງພ້ອມກັບພຣະອົງແລ້ວ ເພື່ອທູນຖາມ ຄື ທູນປຸດສາ ທູນຂໍ ທູນອັນເຊີນ ທູນໃຫ້ພຣະຜູ້ມີພຣະພາກພຸດທະເຈົ້າປະກາດ ລວມຄວາມວ່າ ຂ້າພຣະອົງມາເຝົ້າເພື່ອທູນຖາມພຣະຜູ້ມີພຣະພາກເຈົ້າ

ຄຳວ່າ ນັ້ນ ໃນຄຳວ່າ ຂໍຟັງພຣະດຳຣັດນັ້ນຂອງພຣະອົງ ອະທິບາຍວ່າ ພວກຂ້າພຣະອົງຂໍຟັງ ຄື ຮຽນ ຊົງຈຳ ເຂົ້າໄປກຳນົດພຣະດຳຣັດ ຄື ຄຳທີ່ເປັນແນວທາງ ເທດສະໜາ ຄຳສັ່ງສອນ ຄຳທີ່ພ່ຳສອນ ລວມຄວາມວ່າ ຂໍຟັງພຣະດຳຣັດນັ້ນຂອງພຣະອົງ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ຂ້າພຣະອົງມາເຝົ້າເພື່ອທູນຖາມພຣະຜູ້ມີພຣະພາກເຈົ້າວ່າ
ສັດໂລກມີສະຕິທ່ຽວໄປຢູ່ແນວໃດ ວິນຍານຈຶ່ງດັບສະນິດ
ຂໍຟັງພຣະດຳຣັດນັ້ນຂອງພຣະອົງ

[໗໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ສັດໂລກບໍ່ຍິນດີເວທະນາພາຍໃນແລະພາຍນອກ
ມີສະຕິທ່ຽວໄປຢູ່ແນວນີ້ ວິນຍານຈຶ່ງດັບສະນິດ (໗)

## ວ່າດ້ວຍເວທະນາ

ຄຳວ່າ ສັດໂລກບໍ່ຍິນດີເວທະນາພາຍໃນ ແລະພາຍນອກ ອະທິບາຍວ່າ ສັດໂລກພິຈາລະນາເຫັນເວທະນາໃນເວທະນາພາຍໃນຢູ່ ບໍ່ຍິນດີ ຄື ບໍ່ຈົ່ມເຖິງ ບໍ່ຕິດໃຈເວທະນາໄດ້ແກ່ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມຍິນດີ ຄື ການຈົ່ມເຖິງ ຄວາມຕິດໃຈ ຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ

ສັດໂລກພິຈາລະນາເຫັນເວທະນາໃນເວທະນາພາຍນອກຢູ່ ບໍ່ຍິນດີ ຄື ບໍ່ຈົ່ມເຖິງ ບໍ່ຕິດໃຈເວທະນາ ໄດ້ແກ່ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມຍິນດີ ຄື ການຈົ່ມເຖິງ ຄວາມຕິດໃຈ ຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ

ສັດໂລກພິຈາລະນາເຫັນເວທະນາໃນເວທະນາທັງພາຍໃນ ແລະພາຍນອກຢູ່ ບໍ່ຍິນດີ ຄື ບໍ່ຈົ່ມເຖິງ ບໍ່ຕິດໃຈເວທະນາ ໄດ້ແກ່ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມຍິນດີ ການຈົ່ມເຖິງ ຄວາມຕິດໃຈ ຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ

ສັດໂລກພິຈາລະນາເຫັນທຳຄືຄວາມເກີດຂຶ້ນພາຍໃນ ພິຈາລະນາເຫັນເວທະນາໃນເວທະນາຢູ່ ຯລຯ ສັດໂລກພິຈາລະນາເຫັນທຳຄືຄວາມເສື່ອມໄປພາຍໃນ ພິຈາລະນາເຫັນເວທະນາໃນເວທະນາຢູ່ ຯລຯ ສັດໂລກພິຈາລະນາເຫັນທຳຄືຄວາມເກີດຂຶ້ນ ແລະຄວາມເສື່ອມໄປພາຍໃນ ພິຈາລະນາເຫັນ ເວທະນາໃນເວທະນາຢູ່ ຯລຯ ສັດໂລກພິຈາລະນາເຫັນທຳ ຄື ຄວາມເກີດຂຶ້ນພາຍນອກ ພິຈາລະນາເຫັນເວທະນາໃນເວທະນາຢູ່ ຯລຯ ສັດໂລກພິຈາລະນາເຫັນທຳຄືຄວາມເສື່ອມໄປພາຍນອກ ພິຈາລະນາເຫັນເວທະນາໃນເວທະນາຢູ່ ຯລຯ ສັດໂລກພິຈາລະນາເຫັນທຳຄືຄວາມເກີດຂຶ້ນແລະຄວາມເສື່ອມໄປພາຍນອກ ພິຈາລະນາເຫັນເວທະນາໃນເວທະນາຢູ່ ຯລຯ ສັດໂລກພິຈາລະນາເຫັນທຳ ຄື ຄວາມເກີດຂຶ້ນທັງພາຍໃນ ແລະພາຍນອກ ພິຈາລະນາເຫັນເວທະນາໃນເວທະນາຢູ່ ຯລຯ ສັດໂລກພິຈາລະນາເຫັນທຳຄືຄວາມເສື່ອມໄປທັງພາຍໃນແລະພາຍນອກ ພິຈາລະນາເຫັນເວທະນາໃນ ເວທະນາຢູ່ ຯລຯ ສັດໂລກພິຈາລະນາເຫັນທຳ ຄື ຄວາມເກີດຂຶ້ນ ແລະຄວາມເສື່ອມໄປທັງພາຍໃນ ແລະພາຍນອກ ສັດໂລກພິຈາລະນາເຫັນເວທະນາໃນເວທະນາຢູ່ ບໍ່ຍິນດີ ຄື ບໍ່ຈົ່ມເຖິງ ບໍ່ຕິດໃຈເວທະນາ ໄດ້ແກ່ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມຍິນດີ ຄື ການຈົ່ມເຖິງ ຄວາມຕິດໃຈ ຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ

ສັດໂລກພິຈາລະນາເຫັນເວທະນາໃນເວທະນາດ້ວຍອາການ ໔໔ ຢ່າງ ເຫຼົ່ານີ້ຢູ່ ບໍ່ຍິນດີ ຄື ບໍ່ຈົ່ມເຖິງ ບໍ່ຕິດໃຈເວທະນາ ໄດ້ແກ່ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມຍິນດີ ຄື ການຈົ່ມເຖິງ ຄວາມຕິດໃຈ ຯລຯ

ອີກໄນໜຶ່ງ ສັດໂລກເຫັນເວທະນາ ໂດຍຄວາມເປັນຂອງບໍ່ທ່ຽງ ກໍບໍ່ຍິນດີ ຄື ບໍ່ຈົ່ມເຖິງ ບໍ່ຕິດໃຈເວທະນາ ໄດ້ແກ່ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມຍິນດີ ຄື ການຈົ່ມເຖິງ ຄວາມຕິດໃຈ ຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ

ສັດໂລກເຫັນເວທະນາໂດຍຄວາມເປັນທຸກ ເປັນໂຣກ ເປັນເໝືອນຫົວຝີ ເປັນ ເໝືອນລູກສອນ ເປັນຂອງລຳບາກ ເປັນອາພາດ ຯລຯ ເປັນຂອງທີ່ຕ້ອງສະລັດ ອອກໄປ ກໍບໍ່ຍິນດີ ຄື ບໍ່ຈົ່ມເຖິງ ບໍ່ຕິດໃຈເວທະນາ ໄດ້ແກ່ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມຍິນດີ ຄື ການຈົ່ມເຖິງ ຄວາມຕິດໃຈ ຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ

ສັດໂລກພິຈາລະນາເຫັນເວທະນາໃນເວທະນາດ້ວຍອາການ ໔໔ ຢ່າງເຫຼົ່ານີ້ ຢູ່ບໍ່ຍິນດີ ຄື ບໍ່ຈົ່ມເຖິງ ບໍ່ຕິດໃຈເວທະນາ ໄດ້ແກ່ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມຍິນດີ ຄື ການຈົ່ມເຖິງ ຄວາມຕິດໃຈ ຄວາມຖື ຄວາມຍຶດໝັ້ນ ຄວາມຖືໝັ້ນ ລວມຄວາມວ່າ ສັດໂລກບໍ່ຍິນດີເວທະນາພາຍໃນ ແລະພາຍນອກ

ຄຳວ່າ ມີສະຕິທ່ຽວໄປຢູ່ແນວນີ້ ອະທິບາຍວ່າ ມີສະຕິສຳປະຊັນຍະ ທ່ຽວໄປ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປແນວນີ້ ລວມຄວາມວ່າ ມີສະຕິທ່ຽວໄປຢູ່ແນວນີ້

ຄຳວ່າ ວິນຍານຈຶ່ງດັບສະນິດ ອະທິບາຍວ່າ ວິນຍານທີ່ປະກອບດ້ວຍປຸນຍາພິສັງຂານ ວິນຍານທີ່ປະກອບດ້ວຍອະປຸນຍາພິສັງຂານ ວິນຍານທີ່ປະກອບດ້ວຍອາເນັນຊາພິສັງຂານ ຈຶ່ງດັບໄປ ຄື ເຂົ້າໄປສະງົບ ເຖິງຄວາມຕັ້ງຢູ່ບໍ່ໄດ້ ຣະງັບໄປ ລວມຄວາມວ່າ ວິນຍານຈຶ່ງດັບສະນິດ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ສັດໂລກບໍ່ຍິນດີເວທະນາພາຍໃນແລະພາຍນອກ
ມີສະຕິທ່ຽວໄປຢູ່ແນວນີ້ ວິນຍານຈຶ່ງດັບສະນິດ

ພ້ອມກັບການຈົບຄາຖາ ຯລຯ ອຸໄທມານົບຯລຯ ໂດຍປະກາດວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ

**ອຸທະຍະມານະວະປັນຫານິດເທດທີ ໑໓ ຈົບ**

# ໑໔. ໂປສາລະມານະວະປັນຫານິດເທດ

**ວ່າດ້ວຍປັນຫາຂອງໂປສາລະມານົບ**

[໗໑] (ທ່ານໂປສາລະທູນຖາມ ດັ່ງນີ້)

ພຣະຜູ້ມີພຣະພາກເຈົ້າພຣະອົງໃດ
ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ
ຕັດຄວາມສົງໄສໄດ້ແລ້ວ
ຊົງສະແດງອະດີດທຳ
ຂ້າພຣະອົງມີປັນຫາທີ່ຈະທູນຖາມ
ຈຶ່ງມາເຝົ້າພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຜູ້ຊົງເຖິງຝັ່ງແຫ່ງທຳທັງປວງ (໑)

ຄຳວ່າ ພຣະອົງໃດ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງໃດ ຯລຯ ຊົງສະແດງອະດີດທຳ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະສັບພັນຍູ ຄື ບໍ່ມີຄູອາຈານ ໄດ້ຕັດສະຣູ້ສັດຈະໃນທຳທີ່ບໍ່ເຄີຍສະດັບມາກ່ອນ ດ້ວຍພຣະອົງເອງ ຊົງບັນລຸຄວາມເປັນ ພຣະສັບພັນຍູໃນສັດຈະນັ້ນ ແລະຄວາມເປັນຜູ້ຊຳນານໃນພະລະທັງຫຼາຍ

## ວ່າດ້ວຍການສະແດງອະດີດທຳ

ຄຳວ່າ ຊົງສະແດງອະດີດທຳ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊົງສະແດງອະດີດທຳ ອະນາຄົດທຳ ປັດຈຸບັນທຳ ຂອງພຣະອົງ ແລະຊົນເຫຼົ່າອື່ນ

ພຣະຜູ້ມີພຣະພາກເຈົ້າຊົງສະແດງອະດີດທຳຂອງພຣະອົງ ແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຊົງສະແດງອະດີດທຳ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ຯລຯ ໑,໐໐໐ ຊາດແດ່ ຯລຯ ໑໐໐,໐໐໐ ຊາດແດ່ ຯລຯ ຫຼາຍສັງວັດຕະກັບແດ່ ຯລຯ ຫຼາຍວິວັດຕະກັບ[1]ແດ່ ຯລຯ ຫຼາຍສັງວັດຕະກັບແລະວິວັດຕະກັບແດ່ ຂອງພຣະອົງເອງວ່າ ໃນພົບນັ້ນເຮົາມີຊື່ແນວນີ້ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍໄດ້ມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ຈຶ່ງມາເກີດໃນພົບນີ້ ຊົງສະແດງຊາດກ່ອນ ໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້ ພຣະຜູ້ມີພຣະພາກເຈົ້າຊົງສະແດງອະດີດທຳຂອງພຣະອົງແນວນີ້

ພຣະຜູ້ມີພຣະພາກເຈົ້າຊົງສະແດງອະດີດທຳຂອງຊົນເຫຼົ່າອື່ນ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຊົງສະແດງອະດີດທຳ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ ຫຼາຍສັງວັດຕະກັບ ແລະວິວັດຕະກັບແດ່ ຂອງຊົນເຫຼົ່າອື່ນວ່າ ໃນພົບນັ້ນ ເຂົາມີຊື່ແນວນີ້ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຂົາກໍໄດ້ມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນຈຶ່ງມາເກີດໃນພົບນີ້ ພຣະຜູ້ມີພຣະພາກເຈົ້າຊົງສະແດງຊາດກ່ອນ ໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້ ພຣະຜູ້ມີພຣະພາກເຈົ້າຊົງສະແດງອະດີດທຳຂອງຊົນເຫຼົ່າອື່ນແນວນີ້

ພຣະຜູ້ມີພຣະພາກເຈົ້າ ເມື່ອຕັດຊາດົກ ໕໐໐ ຊື່ວ່າຊົງສະແດງອະດີດທຳຂອງພຣະອົງ ແລະຊົນເຫຼົ່າອື່ນ ເມື່ອຕັດມະຫາປະທານິຍະສູດ ຊື່ວ່າຊົງສະແດງອະດີດທຳຂອງພຣະອົງແລະຊົນເຫຼົ່າອື່ນ ເມື່ອຕັດມະຫາສຸທັດສະນິຍະສູດ[2] ຊື່ວ່າຊົງສະແດງອະດີດທຳຂອງພຣະອົງແລະຊົນເຫຼົ່າອື່ນ ເມື່ອຕັດມະຫາໂຄວິນທິຍະສູດ ຊື່ວ່າຊົງສະແດງອະດີດທຳຂອງພຣະອົງ ແລະຊົນເຫຼົ່າອື່ນ ເມື່ອຕັດມາກະເທວິຍະສູດ ກໍຊື່ວ່າຊົງສະແດງອະດີດທຳຂອງພຣະອົງ ແລະຊົນ ເຫຼົ່າອື່ນ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ຈຸນທະ ຕະຖາຄົດມີຍານອັນຕາມຣະລຶກຜາຣົບອະດີດຕະການຍາວນານ ຕະຖາຄົດມຸ້ງອະດີດຕະການຍາວນານເທົ່າໃດ ກໍຣະລຶກໄດ້ ເທົ່າ

ນັ້ນ ຕະຖາຄົດມີຍານອັນຕາມຣະລຶກ ຜາຣົບອະນາຄົດການຍາວນານໆລໆ ຈຸບທະ ຍານອັນເກີດທີ່ຕົ້ນໂພຂອງຕະຖາຄົດ ຜາຣົບປັດຈຸບັນການຍາວນານ ເກີດຂຶ້ນວ່າ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ ພົບໃໝ່ຕໍ່ໄປບໍ່ມີ

ພຣະອິນທະຣິຍະປະໂຣປະຣິຍັດຕະຍານ (ຍານອັນກຳນົດຮູ້ຄວາມຍິ່ງ ແລະຍ່ອນແຫ່ງອິນຊີຂອງສັດທັງຫຼາຍ) ເປັນກຳລັງຂອງຕະຖາຄົດ ພຣະອາສະຍານຸສະຍະຍານ (ຄວາມຮູ້ຈັກສັນທະທີ່ມານອນ ແລະກິເລດທີ່ນອນເນື່ອງ) ຂອງເຫຼົ່າສັດ ເປັນກຳລັງຂອງຕະຖາຄົດ ພຣະຍະມະກະປາຕິຫາຣິຍະຍານ (ຍານເປັນເຄື່ອງນຳທຳມະຊາດຄູ່ກົງກັນຂ້າມກັນກັບມາສະແດງ) ເປັນກຳລັງຂອງຕະຖາຄົດ ພຣະມະຫາກະລຸນາສະມາປັດຕິຍານ (ຍານໃນພຣະມະຫາກະລຸນາສະມາບັດ) ເປັນກຳລັງຂອງຕະຖາຄົດ ພຣະສັບພັນຍຸຕະຍານ ເປັນກຳລັງຂອງຕະຖາຄົດ ພຣະອະນາວະຣະນະຍານ (ຍານທີ່ຫາເຄື່ອງກາງກັ້ນບໍ່ໄດ້) ເປັນກຳລັງຂອງຕະຖາຄົດ ພຣະອະນາວະຣະນະຍານອັນບໍ່ມີອັນໃດຂ້ອງ ບໍ່ມີອັນໃດຂັດໄດ້ໃນທຸກແຫ່ງຫົນ ເປັນກຳລັງຂອງຕະຖາຄົດ ພຣະຜູ້ມີພຣະພາກເຈົ້າຊົງສະແດງ ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍປະກາດອະດີດທຳແດ່ ອະນາຄົດທຳແດ່ ປັດຈຸບັນທຳແດ່ ຂອງພຣະອົງແລະຊົນເຫຼົ່າອື່ນແນວນີ້ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງໃດ ໆລໆ ຊົງສະແດງອະດີດທຳ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານໂປສາລະທູນຖາມ ດັ່ງນີ້ ເປັນບົດສົນທິ ໆລໆ

ຄຳວ່າ ທ່ານ ເປັນຄຳກ່າວດ້ວຍຄວາມຮັກ ໆລໆ

ຄຳວ່າ ໂປສາລະ ເປັນຊື່ຂອງພາມນັ້ນ ໆລໆ ຊື່ຽກສະເພາະ ລວມຄວາມວ່າ ທ່ານໂປສາລະທູນຖາມ ດັ່ງນີ້

ຄຳວ່າ ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ຕັດຄວາມສົງໄສໄດ້ແລ້ວ ອະທິບາຍວ່າ ຕັນຫາຕັດຮຽກວ່າ ເຫດໃຫ້ຫວັ່ນໄຫວ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ໆລໆ ອະພິດຊາອະກຸສົນມູນ ຄື ໂລພະ

ຕັນຫານັ້ນເຫດໃຫ້ຫວັ່ນໄຫວ ພຣະຜູ້ມີພຣະພາກພຸດທະເຈົ້າຊົງລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະພຸດທະເຈົ້າ ຈຶ່ງຊື່ວ່າບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ຍ້ອນເປັນຜູ້ລະຄວາມຫວັ່ນໄຫວໄດ້ແລ້ວ ຈຶ່ງບໍ່ຊົງຫວັ່ນໄຫວ ພຣະຜູ້ມີພຣະພາກເຈົ້າບໍ່ຊົງຫວັ່ນໄຫວ ຄື ບໍ່ສະເທືອນ ບໍ່ເຄື່ອນໄຫວ ບໍ່ສະທ້ານ ບໍ່ສັ່ນສະທ້ານ ຍ້ອນໄດ້ລາບ ຍ້ອນເສື່ອມລາບແດ່ ຍ້ອນໄດ້ຍົດ ຍ້ອນເສື່ອມຍົດແດ່ ຍ້ອນສັນເສີນ ຍ້ອນນິນທາແດ່ ຍ້ອນສຸກ ຍ້ອນທຸກແດ່ ລວມຄວາມວ່າ ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ

ຄຳວ່າ ຕັດຄວາມສົງໄສໄດ້ແລ້ວ ອະທິບາຍວ່າ ຄວາມລັງເລຕັດຮຽກວ່າ ຄວາມສົງໄສ ໄດ້ແກ່ ຄວາມສົງໄສໃນທຸກ ໆລໆ ຄວາມຫວາດຫວັ່ນແຫ່ງຈິດ ຄວາມຕິດຂັດໃນໃຈ ຄວາມສົງ

ໄສນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າຊົງລະ ຄື ຕັດ ຕັດຂາດ ຕັດຂາດພ້ອມໃຫ້ເຂົ້າໄປ ສະງົບ ສະລັດຖິ້ມ ຣະງັບ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ດັ່ງນັ້ນ ພຣະພຸດທະເຈົ້າ ຈຶ່ງຊື່ວ່າ ຊົງຕັດຄວາມສົງໄສໄດ້ແລ້ວ ລວມຄວາມວ່າ ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ ຕັດຄວາມ ສົງໄສໄດ້ແລ້ວ

ຄຳວ່າ ຜູ້ຊົງເຖິງຝັ່ງແຫ່ງທຳທັງປວງ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊົງເຖິງຝັ່ງ ໄດ້ດ້ວຍຄວາມຮູ້ຍິ່ງ ເຖິງຝັ່ງໄດ້ດ້ວຍການກຳນົດຮູ້ ເຖິງຝັ່ງໄດ້ດ້ວຍການລະ ເຖິງຝັ່ງໄດ້ດ້ວຍ ການຈະເລີນພາວະນາ ເຖິງຝັ່ງໄດ້ດ້ວຍການເຮັດໃຫ້ແຈ້ງ ເຖິງຝັ່ງໄດ້ດ້ວຍການເຂົ້າສະມາບັດ ເຖິງຝັ່ງໄດ້ດ້ວຍຄວາມຮູ້ຍິ່ງທຳທັງປວງ ຯລຯ ພຣະອົງບໍ່ມີການວຽນເກີດ ວຽນແກ່ ວຽນຕາຍ ແລະພົບໃໝ່ກໍບໍ່ມີອີກ ລວມຄວາມວ່າ ຜູ້ຊົງເຖິງຝັ່ງແຫ່ງທຳທັງປວງ

ຄຳວ່າ ຂ້າພຣະອົງມີບັນຫາທີ່ຈະທູນຖາມ ຈຶ່ງມາເຝົ້າ ອະທິບາຍວ່າ ຂ້າພຣະອົງຕ້ອງ ການຖາມບັນຫາຈຶ່ງມາເຝົ້າ ຯລຯ ຂໍ້ນີ້ຈຶ່ງເປັນພາຣະຂອງພຣະອົງ ລວມຄວາມວ່າ ຂ້າພຣະອົງມີ ບັນຫາທີ່ຈະທູນຖາມ ຈຶ່ງມາເຝົ້າ ແນວນີ້ແດ່ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

(ທ່ານໂປສາລະທູນຖາມ ດັ່ງນີ້)

ພຣະຜູ້ມີພຣະພາກເຈົ້າພຣະອົງໃດ
ບໍ່ມີຕັນຫາເຫດໃຫ້ຫວັ່ນໄຫວ
ຕັດຄວາມສົງໄສໄດ້ແລ້ວ
ຊົງສະແດງອະດີດທຳ
ຂ້າພຣະອົງມີບັນຫາທີ່ຈະທູນຖາມ
ຈຶ່ງມາເຝົ້າພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຜູ້ຊົງເຖິງຝັ່ງແຫ່ງທຳທັງປວງ

[໗໔] (ທ່ານໂປສາລະທູນຖາມວ່າ)

ຂ້າແດ່ ພຣະອົງຜູ້ສັກກະ ຂ້າພຣະອົງຂໍທູນຖາມເຖິງຍານ
ຂອງບຸກຄົນຜູ້ບໍ່ມີຮູບສັນຍາ ຜູ້ລະຮູບກາຍໄດ້ທັງໝົດ
ຜູ້ພິຈາລະນາທັງພາຍໃນ ແລະພາຍນອກເຫັນວ່າ ບໍ່ມີອັນໃດ
ບຸກຄົນຜູ້ເປັນເຊັ່ນນັ້ນ ຄວນແນະນຳແນວໃດ (໔)

ຄຳວ່າ ຜູ້ບໍ່ມີຮູບສັນຍາ ອະທິບາຍວ່າ
ຮູບສັນຍາ ເປັນແນວໃດ?

ຄື ສັນຍາ ຄວາມຈຳໄດ້ ຄວາມເປັນຜູ້ໝາຍຮູ້ຂອງບຸກຄົນຜູ້ເຂົ້າຮູປາວະຈອນສະມາບັດ ຫຼືຖືກຳເນີດ (ໃນຮູປາວະຈອນພົບ) ຫຼື ມີທຳເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ນີ້ຊື່ວ່າຮູບສັນຍາ

ຄຳວ່າ ຜູ້ບໍ່ມີຮູບສັນຍາ ອະທິບາຍວ່າ ຜູ້ໄດ້ອະຮູບສະມາບັດ ໔ ບໍ່ມີຮູບສັນຍາ ຄື ບໍ່ຜາກົດ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນແລ້ວ ລວມຄວາມວ່າ ຜູ້ບໍ່ມີຮູບສັນຍາ

ຄຳວ່າ ຜູ້ລະຮູບກາຍໄດ້ທັງໝົດ ອະທິບາຍວ່າ ຮູບກາຍເຊິ່ງມີໃນເວລາປະຕິສົນທິທັງໝົດ ບຸກຄົນນັ້ນລະໄດ້ແລ້ວ ຄື ເຂົາລະຮູບກາຍ ຍ້ອນກ້າວລ່ວງດ້ວຍຕະທັງຄະປະຫານ (ແລະ) ດ້ວຍວິກຂຳພະນະປະຫານ ລວມຄວາມວ່າ ຜູ້ລະຮູບກາຍໄດ້ທັງໝົດ

ຄຳວ່າ ບໍ່ມີອັນໃດ ໃນຄຳວ່າ ຜູ້ພິຈາລະນາທັງພາຍໃນ ແລະພາຍນອກເຫັນວ່າ ບໍ່ມີອັນໃດ ອະທິບາຍວ່າ ອາກິນຈັນຍາຍະຕະນະສະມາບັດ ຊື່ວ່າ ອາກິນຈັນຍາຍະຕະນະສະມາບັດ ຍ້ອນອັດຖະວ່າ ອັນໃດໜ້ອຍໜຶ່ງ ຍ່ອມບໍ່ມີ ຍ້ອນເຫດໃດ?

ຄື ບຸກຄົນຜູ້ມີສະຕິ ເຂົ້າວິນຍານັນຈາຍະຕະນະສະມາບັດໃດ ອອກຈາກສະມາບັດນັ້ນແລ້ວ ບໍ່ໃຫ້ວິນຍານນັ້ນມີ ບໍ່ໃຫ້ມີໂດຍປະການຕ່າງ ໆ ໃຫ້ອັນຕະຣະທານຫາຍໄປ ຍ່ອມເຫັນວ່າ ອັນໃດ ໜ້ອຍໜຶ່ງ ຍ່ອມບໍ່ມີ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອາກິນຈັນຍາຍະຕະນະສະມາບັດ ຍ້ອນອັດຖະວ່າອັນໃດ ໜ້ອຍໜຶ່ງ ຍ່ອມບໍ່ມີ ລວມຄວາມວ່າ ຜູ້ພິຈາລະນາທັງພາຍໃນແລະພາຍນອກເຫັນວ່າ ບໍ່ມີອັນໃດ

ຄຳວ່າ ຂ້າແຕ່ພຣະອົງຜູ້ສັກກະ ໃນຄຳວ່າ ຂ້າແຕ່ ພຣະອົງຜູ້ສັກກະ ຂ້າພຣະອົງຂໍທູນຖາມເຖິງຍານ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຜູ້ສັກກະ ພຣະຜູ້ມີພຣະພາກເຈົ້າສະເດັດອອກບວດຈາກສາກະຍະຕະກູນ ຈຶ່ງຊື່ວ່າຜູ້ສັກກະ ໆລໆ ຊົງລະໄພແລະຄວາມຢ້ານກົວໄດ້ແລ້ວ ໝົດຄວາມຂົນພອງສະຫຍອງເກົ້າ ຈຶ່ງຊື່ວ່າຜູ້ສັກກະ

ຄຳວ່າ ຂ້າແຕ່ພຣະອົງຜູ້ສັກກະ ຂ້າພຣະອົງຂໍທູນຖາມເຖິງຍານ ອະທິບາຍວ່າ ຂ້າພຣະອົງຂໍທູນຖາມເຖິງຍານ ຄື ທູນຖາມເຖິງປັນຍາ ທູນຖາມເຖິງຄວາມຮູ້ແຈ້ງຂອງບຸກຄົນນັ້ນວ່າ ຍານເປັນແນວໃດ ມີສັນຖານແນວໃດ ມີປະການແນວໃດ ປຽບໄດ້ກັບອັນໃດ ບຸກຄົນນັ້ນເພິ່ງປາຖະໜາ ລວມຄວາມວ່າ ຂ້າແຕ່ພຣະອົງຜູ້ສັກກະ ຂ້າພຣະອົງຂໍທູນຖາມເຖິງຍານ

ຄຳວ່າ ບຸກຄົນຜູ້ເປັນເຊັ່ນນັ້ນ ຄວນແນະນຳແນວໃດ ອະທິບາຍວ່າ ບຸກຄົນນັ້ນຄວນແນະນຳ ຄວນແນະນຳໄປໂດຍວິເສດ ຕາມແນະນຳ ແນະນຳໃຫ້ຮູ້ຍິ່ງ ໆ ຂຶ້ນໄປ ໃຫ້ຜູ້ອື່ນຮູ້ຈັກເຮັດປະໂຫຍດ ໃຫ້ເພ່ງພິນິດ ໃຫ້ພິຈາລະນາ ໃຫ້ເຫຼື້ອມໃສແນວໃດ ໄດ້ແກ່ ຄວນໃຫ້ເກີດຍານຍິ່ງ ໆ ຂຶ້ນໄປແກ່ເຂົາແນວໃດ

ຄຳວ່າ ບຸກຄົນຜູ້ເປັນເຊັ່ນນັ້ນ ໄດ້ແກ່ ບຸກຄົນຜູ້ເປັນເຊັ່ນນັ້ນ ຄື ຜູ້ເປັນແນວນັ້ນ ຜູ້ດຳຣົງຢູ່ແນວນັ້ນ ຜູ້ເປັນປະການນັ້ນ ຜູ້ມີສ່ວນແນວນັ້ນ ໄດ້ແກ່ ຜູ້ໄດ້ອາກິນຈັນຍາຍະຕະນະສະມາບັດ ລວມຄວາມວ່າ ບຸກຄົນຜູ້ເປັນເຊັ່ນນັ້ນ ຄວນແນະນຳແນວໃດ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ຂ້າແຕ່ ພຣະອົງຜູ້ສັກກະ ຂ້າພຣະອົງຂໍທູນຖາມເຖິງຍານ
ຂອງບຸກຄົນຜູ້ບໍ່ມີຮູບສັນຍາ ຜູ້ລະຮູບກາຍໄດ້ທັງໝົດ
ຜູ້ພິຈາລະນາທັງພາຍໃນແລະພາຍນອກເຫັນວ່າ ບໍ່ມີອັນໃດ
ບຸກຄົນຜູ້ເປັນເຊັ່ນນັ້ນ ຄວນແນະນຳແນວໃດ

[໗໓] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂປສາລະ)

ຕະຖາຄົດຮູ້ຍິ່ງເຊິ່ງວິນຍານັດຖິຕິທັງໝົດ
ຮູ້ຈັກບຸກຄົນນັ້ນຜູ້ດຳຣົງຢູ່ ຜູ້ນ້ອມໄປແລ້ວ
ຜູ້ມີອາກິນຈັນຍາຍະຕະນະສະມາບັດນັ້ນເປັນບ່ອນມຸ້ງໝາຍ (໓)

## ວ່າດ້ວຍວິນຍານັດຖິຕິ ໗

ຄຳວ່າ ເຊິ່ງວິນຍານັດຖິຕິທັງໝົດ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊົງຮູ້ ວິນຍານັດຖິຕິ ໔ ດ້ວຍອຳນາດອະພິສັງຂານ ຊົງຮູ້ວິນຍານັດຖິຕິ ໗ ດ້ວຍອຳນາດປະຕິສົນທິ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວິນຍານັດຖິຕິ ໔ ດ້ວຍອຳນາດອະພິສັງຂານແນວໃດ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ວິນຍານ (ຄວາມຮູ້ແຈ້ງອາລົມ) ທີ່ເຂົ້າເຖິງຮູບ ເມື່ອດຳຣົງຢູ່ກໍມີຮູບເປັນອາລົມ ມີຮູບເປັນບ່ອນຕັ້ງ ເຂົ້າໄປເສບສະເຫວີຍຄວາມເພີດເພີນຕັ້ງຢູ່ ເຖິງຄວາມຈະເລີນ ງອກງາມ ໄພບູນໄດ້ ພິກຂຸທັງຫຼາຍ ວິນຍານທີ່ເຂົ້າເຖິງເວທະນາ ຯລຯ ພິກຂຸທັງຫຼາຍ ວິນຍານທີ່ເຂົ້າເຖິງສັນຍາ ຯລຯ ອີກໄນໜຶ່ງ ພິກຂຸທັງຫຼາຍ ວິນຍານທີ່ເຂົ້າເຖິງສັງຂານ ເມື່ອດຳຣົງຢູ່ ກໍມີສັງຂານເປັນອາລົມ ມີສັງຂານເປັນບ່ອນຕັ້ງ ເຂົ້າໄປເສບສະເຫວີຍຄວາມເພີດເພີນຕັ້ງຢູ່ເຖິງຄວາມຈະເລີນ ງອກງາມ ໄພບູນໄດ້ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກວິນຍານັດຖິຕິ ໔ ດ້ວຍອຳນາດອະພິສັງຂານແນວນີ້

ພຣະຜູ້ມີພຣະພາກເຈົ້າຊົງຮູ້ວິນຍານັດຖິຕິ ໗ ດ້ວຍອຳນາດປະຕິສົນທິແນວໃດ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ມີສັດເຫຼົ່າໜຶ່ງ ມີກາຍຕ່າງກັນ ມີສັນຍາຕ່າງກັນ ຄື ມະນຸດບາງພວກ ເທວະດາບາງພວກ ວິນິປາຕິກະບາງພວກນີ້ ຄື ວິນຍານັດຖິຕິທີ ໑

ສັດເຫຼົ່າໜຶ່ງ ມີກາຍຕ່າງກັນ ແຕ່ມີສັນຍາແນວດຽວກັນ ຄື ພວກເທບຊັ້ນພົມມະກາຍິກາເກີດໃນປະຖົມຊານ ນີ້ຄືວິນຍານັດຖິຕິທີ ໒

ສັດເຫຼົ່າໜຶ່ງ ມີກາຍແນວດຽວກັນ ແຕ່ມີສັນຍາຕ່າງກັນ ຄື ພວກເທບຊັ້ນອາພັດສະຣະ ນີ້ຄືວິນຍານັດຖິຕິທີ ໓

ສັດເຫຼົ່າໜຶ່ງ ມີກາຍແນວດຽວກັນ (ແລະ) ມີສັນຍາຢ່າງດຽວກັນ ຄື ພວກເທບຊັ້ນສຸພະກິນຫະ ນີ້ຄືວິນຍານັດຖິຕິທີ ໔

ສັດເຫຼົ່າໜຶ່ງ ກ້າວລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ມະນະສິການນານັດຕະສັນຍາ ໂດຍປະການທັງປວງ ເຂົ້າເຖິງອາກາສານັນຈາຍະຕະນະຊານ ດ້ວຍມະນະສິການວ່າ ອາກາດບໍ່ມີບ່ອນສຸດ ນີ້ຄືວິນຍານັດຖິຕິທີ ໕

ສັດເຫຼົ່າໜຶ່ງ ກ້າວລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ເຂົ້າເຖິງວິນຍານັນຈາຍະຕະນະຊານ ດ້ວຍມະນະສິການວ່າ ວິນຍານບໍ່ມີບ່ອນສຸດ ນີ້ ຄື ວິນຍານັດຖິຕິທີ ໖

ສັດເຫຼົ່າໜຶ່ງ ກ້າວລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ເຂົ້າເຖິງອາກິນຈັນຍາຍະຕະນະຊານ ດ້ວຍມະນະສິການວ່າ ບໍ່ມີອັນໃດເລີຍ ນີ້ຄື ວິນຍານັດຖິຕິ ທີ ໗

ພຣະຜູ້ມີພຣະພາກເຈົ້າຊົງຮູ້ວິນຍານັດຖິຕິ ໗ ດ້ວຍອຳນາດປະຕິສົນທິແນວນີ້ ລວມຄວາມ ວ່າ ເຊິ່ງວິນຍານັດຖິຕິທັງໝົດ

ຄຳວ່າ ໂປສາລະ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂປສາລະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂປສາລະ

## ວ່າດ້ວຍພຣະຕະຖາຄົດ

ຄຳວ່າ ຮູ້ຍິ່ງ ໃນຄຳວ່າ ຕະຖາຄົດຮູ້ຍິ່ງ ອະທິບາຍວ່າ ພຣະຕະຖາຄົດຊົງຮູ້ຍິ່ງ ຄື ຊົງຮູ້ຊັດແຈ້ງ ຮູ້ສະເພາະ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ຈຸນທະ ຖ້າແມ່ນເລື້ອງອະດີດ ເປັນເລື້ອງບໍ່ຈິງ ບໍ່ແທ້ ບໍ່ປະກອບດ້ວຍປະໂຫຍດ ຕະຖາຄົດກໍບໍ່ພະຍາກອນເລື້ອງ ອະດີດນັ້ນ ຖ້າແມ່ນເລື້ອງອະດີດ ເປັນເລື້ອງຈິງແທ້ ແຕ່ບໍ່ປະກອບດ້ວຍປະໂຫຍດ ຕະຖາຄົດ ກໍບໍ່ພະຍາກອນເລື້ອງອະດີດນັ້ນ ຖ້າແມ່ນເລື້ອງອະດີດ ເປັນເລື້ອງຈິງແທ້ ທັງປະກອບດ້ວຍປະໂຫຍດ ໃນເລື້ອງນັ້ນ ຕະຖາຄົດກໍຮູ້ຈັກການທີ່ຈະພະຍາກອນບັນຫານັ້ນ ຈຸນທະ ຖ້າແມ່ນ ເລື້ອງອະນາຄົດ ຯລຯ ຈຸນທະ ຖ້າແມ່ນເລື້ອງປັດຈຸບັນ ເປັນເລື້ອງບໍ່ຈິງ ບໍ່ແທ້ ບໍ່ປະກອບ ດ້ວຍປະໂຫຍດ ຕະຖາຄົດກໍບໍ່ພະຍາກອນເລື້ອງປັດຈຸບັນນັ້ນ ເຖິງແມ່ນເລື້ອງປັດຈຸບັນ ເປັນເລື້ອງຈິງ ແທ້ ແຕ່ບໍ່ປະກອບດ້ວຍປະໂຫຍດ ຕະຖາຄົດກໍບໍ່ພະຍາກອນເລື້ອງປັດຈຸບັນນັ້ນ ເຖິງແມ່ນເລື້ອງປັດຈຸບັນ ເປັນເລື້ອງຈິງແທ້ ທັງປະກອບດ້ວຍປະໂຫຍດ ໃນເລື້ອງນັ້ນ ຕະຖາຄົດກໍຮູ້ຈັກການທີ່ຈະພະຍາກອນບັນຫານັ້ນ ຈຸນທະ ຕະຖາຄົດເປັນການວາທີ ພູຕະວາທີ ອັດຖະວາທີ ທຳມະວາທີ ວິ

ນະຍະວາທີໃນທຳ ທັງອະດີດ ອະນາຄົດ ແລະປັດຈຸບັນ ດ້ວຍປະການແນວນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຕະຖາຄົດ

ຈຸນທະ ອາຍະຕະນະໃດແລ ອັນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ອັນໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດ ເຫັນແລ້ວ ໄດ້ຍິນແລ້ວ ຮູ້ແລ້ວ ຮູ້ແຈ້ງແລ້ວ ເຖິງແລ້ວ ເສາະຫາແລ້ວ ພິຈາລະນາແລ້ວດ້ວຍໃຈ ອາຍະຕະນະທັງໝົດນັ້ນ ຕະຖາຄົດຮູ້ຍິ່ງເອງແລ້ວ ຍ້ອນແນວນັ້ນຈຶ່ງຮຽກວ່າ ຕະຖາຄົດ

ຕະຖາຄົດຍ່ອມຕັດສະຣູ້ອະນຸດຕະຣະສຳມາສຳໂພທິຍານ ໃນຣາຕີໃດ ແລະຕະຖາຄົດຍ່ອມປະຣິນິບພານດ້ວຍອະນຸປາທິເສສະນິບພານທາດໃນຣາຕີໃດ ຕະຖາຄົດຍ່ອມກ່າວ ສະແດງຊີ້ແຈ່ງເລື້ອງໃດໃນລະຫວ່າງນັ້ນ ເລື້ອງທັງໝົດນັ້ນເປັນເລື້ອງຈິງແທ້ ບໍ່ເປັນແນວອື່ນ ຍ້ອນແນວນັ້ນຈຶ່ງຮຽກວ່າ ຕະຖາຄົດ

ຕະຖາຄົດຕັດແນວໃດ ເຮັດແນວນັ້ນ ເຮັດແນວໃດ ຕັດແນວນັ້ນ ຕະຖາຄົດຕັດແນວໃດເຮັດແນວນັ້ນ ເຮັດແນວໃດ ຕັດແນວນັ້ນ ດ້ວຍປະການແນວນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຕະຖາຄົດ

ຈຸນທະ ຕະຖາຄົດຊົງຍິ່ງໃຫຍ່ໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ອັນຜູ້ໃດ ຄອບງຳບໍ່ໄດ້ ເປັນຜູ້ເຫັນໂດຍຖ່ອງແທ້ເປັນຜູ້ໃຫ້ອຳນາດເປັນໄປ ຍ້ອນແນວນັ້ນຈຶ່ງຮຽກວ່າ ຕະຖາຄົດ ລວມຄວາມວ່າ ຕະຖາຄົດຮູ້ຍິ່ງ

ຄຳວ່າ ຮູ້ຈັກບຸກຄົນນັ້ນ ຜູ້ດຳຣົງຢູ່ ອະທິບາຍວ່າ

ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກບຸກຄົນຜູ້ກຳລັງດຳຣົງຢູ່ໃນໂລກນີ້ ດ້ວຍອຳນາດກຳມາພິສັງຂານ ວ່າ ບຸກຄົນນີ້ ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນແລ້ວ ຫຼັງຈາກຕາຍ ຈັກໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກບຸກຄົນຜູ້ກຳລັງດຳຣົງຢູ່ໃນໂລກນີ້ ດ້ວຍອຳນາດກຳມາພິສັງຂານ ວ່າ ບຸກຄົນນີ້ ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນແລ້ວ ຫຼັງຈາກຕາຍ ຈັກໄປເກີດໃນກຳເນີດເດຍຣັດສານ

ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກບຸກຄົນຜູ້ກຳລັງດຳຣົງຢູ່ໃນໂລກນີ້ ດ້ວຍອຳນາດກຳມາພິສັງຂານວ່າ ບຸກຄົນນີ້ ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນແລ້ວ ຫຼັງຈາກຕາຍ ຈັກໄປເກີດໃນເປດວິໄສ

ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກບຸກຄົນຜູ້ກຳລັງດຳຣົງຢູ່ໃນໂລກນີ້ ດ້ວຍອຳນາດກຳມາພິສັງຂານວ່າ ບຸກຄົນນີ້ ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນແລ້ວ ຫຼັງຈາກຕາຍ ຈັກຖືກຳເນີດໃນໝູ່ມະນຸດ

ພຣະຜູ້ມີພຣະພາກເຈົ້າຊົງຮູ້ຈັກບຸກຄົນຜູ້ກຳລັງດຳຣົງຢູ່ໃນໂລກນີ້ເອງ ດ້ວຍອຳນາດກຳມາພິສັງຂານວ່າ ບຸກຄົນນີ້ ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນແລ້ວຫຼັງຈາກຕາຍ ຈັກໄປເກີດໃນສຸກຄະຕິໂລກສະຫວັນ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ສາຣີບຸດ ເຮົາກຳນົດໃຈຂອງບຸກຄົນບາງຄົນໃນໂລກນີ້ດ້ວຍໃຈແນວນີ້ວ່າ ບຸກຄົນນີ້ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນແລ້ວ ຫຼັງຈາກຕາຍ ຈັກໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ເຮົາກຳນົດໃຈຂອງບຸກຄົນບາງຄົນໃນໂລກນີ້ດ້ວຍໃຈແນວນີ້ວ່າ ບຸກຄົນນີ້ປະຕິບັດ ແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນແລ້ວ ຫຼັງຈາກຕາຍ ຈັກໄປເກີດໃນກຳເນີດເດຍຣັດສານ

ເຮົາກຳນົດໃຈຂອງບຸກຄົນບາງຄົນໃນໂລກນີ້ດ້ວຍໃຈແນວນີ້ວ່າ ບຸກຄົນ ນີ້ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນແລ້ວ ຫຼັງຈາກຕາຍ ຈັກໄປເກີດໃນເຜດວິໄສ

ເຮົາກຳນົດໃຈຂອງບຸກຄົນບາງຄົນໃນໂລກນີ້ດ້ວຍໃຈແນວນີ້ວ່າ ບຸກຄົນນີ້ປະຕິບັດແນວນັ້ນເປັນໄປແນວນັ້ນ ແລະດຳເນີນທາງນັ້ນແລ້ວ ຫຼັງຈາກຕາຍ ຈັກຖືກຳເນີດໃນໝູ່ມະນຸດ

ເຮົາກຳນົດໃຈຂອງບຸກຄົນບາງຄົນໃນໂລກນີ້ດ້ວຍໃຈແນວນີ້ວ່າ ບຸກຄົນນີ້ປະຕິບັດແນວນັ້ນ ເປັນໄປແນວນັ້ນ ແລະດຳເນີນທາງນັ້ນແລ້ວ ຫຼັງຈາກຕາຍ ຈັກໄປເກີດໃນສຸກຄະຕິໂລກສະຫວັນ

ເຮົາກຳນົດໃຈຂອງບຸກຄົນບາງຄົນໃນໂລກນີ້ດ້ວຍໃຈແນວນີ້ວ່າ ບຸກຄົນນີ້ປະຕິບັດແນວນັ້ນ ເປັນໄປແນວນັ້ນແລະດຳເນີນທາງນັ້ນແລ້ວ ຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ບໍ່ມີອາສະວະ ຍ້ອນອາສະວະໝົດສິ້ນໄປດ້ວຍປັນຍາອັນຍິ່ງ ເຂົ້າເຖິງຢູ່ໃນປັດຈຸບັນ ລວມຄວາມວ່າ ຮູ້ຈັກບຸກຄົນນັ້ນຜູ້ດຳຣົງຢູ່

ຄຳວ່າ ຜູ້ນ້ອມໄປແລ້ວ ໃນຄຳວ່າ ຜູ້ນ້ອມໄປແລ້ວ ຜູ້ມີອາກິນຈັນຍາຍະຕະນະສະມາບັດນັ້ນເປັນບ່ອນມຸ້ງໝາຍ ອະທິບາຍວ່າ ຜູ້ນ້ອມໄປສູ່ອາກິນຈັນຍາຍະຕະນະສະມາບັດ ຄື ນ້ອມໄປໂດຍວິໂມກ ນ້ອມໄປໃນສະມາບັດນັ້ນ ນ້ອມໄປສູ່ສະມາບັດນັ້ນ ມີສະມາບັດນັ້ນເປັນໃຫຍ່

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ບຸກຄົນນີ້ນ້ອມໃຈໄປໃນຮູບ ນ້ອມໃຈໄປໃນສຽງ ນ້ອມໃຈໄປໃນກິ່ນ ນ້ອມໃຈໄປໃນຣົດ ນ້ອມໃຈໄປໃນໂຜດຖັບພະ ນ້ອມໃຈໄປໃນຕະກູນ ນ້ອມໃຈໄປໃນໝູ່ຄະນະ ນ້ອມໃຈໄປໃນອາວາດ ນ້ອມໃຈໄປໃນລາບ ນ້ອມໃຈໄປໃນຍົດ ນ້ອມໃຈໄປໃນສັນເສີນ ນ້ອມໃຈໄປໃນສຸກ ນ້ອມໃຈໄປໃນຈີວອນ ນ້ອມໃຈໄປໃນບິນທະບາດ ນ້ອມໃຈໄປໃນເສນາສະນະ ນ້ອມໃຈໄປໃນຄິລານະປັດໄຈເພສັດບໍຣິຂານ ນ້ອມໃຈໄປໃນພຣະສູດ ນ້ອມໃຈໄປໃນພຣະວິໄນ ນ້ອມໃຈໄປໃນພຣະອະພິທຳ

ນ້ອມໃຈໄປໃນບັງສຸກູລິກັງຄະທຸດົງ (ສະມາທານການນຸ່ງຫົ່ມຜ້າບັງສຸກຸນເປັນວັດ) ນ້ອມໃຈໄປໃນເຕຈີວະຣິກັງຄະທຸດົງ (ສະມາທານການຊົງໄຕຣຈີວອນເປັນວັດ)

ນ້ອມໃຈໄປໃນປິນດະປາຕິກັງຄະທຸດົງ (ສະມາທານການທ່ຽວບິນທະບາດເປັນວັດ) ນ້ອມໃຈໄປໃນສະປະທານະຈາຣິກັງຄະທຸດົງ (ສະມາທານການທ່ຽວບິນທະບາດໄປຕາມລຳດັບເປັນວັດ) ນ້ອມໃຈໄປໃນເອກາສະນິກັງຄະທຸດົງ (ສະມາທານການນັ່ງສັນໃນອາສະນະດຽວເປັນວັດ)

ນ້ອມໃຈໄປໃນປັດຕະປິນດິກັງຄະທຸດົງ (ສະມາທານການສັນສະເພາະໃນບາດເປັນວັດ) ນ້ອມໃຈໄປໃນຂະລຸປັດສາພັດຕິກັງຄະທຸດົງ (ສະມາທານການງົດສັນອາຫານຄາບຫຼັງເປັນວັດ)

ນ້ອມໃຈໄປໃນອາຣັນຍິກັງຄະທຸດົງ (ສະມາທານການຢູ່ປ່າເປັນວັດ) ນ້ອມໃຈໄປໃນຣຸກຂະມູລິກັງຄະທຸດົງ (ສະມາທານການຖືຢູ່ເຫງົ້າໄມ້ເປັນວັດ) ນ້ອມໃຈໄປໃນອັບໂພກາສິກັງຄະທຸດົງ (ສະມາທານການຖືຢູ່ບ່ອນແຈ້ງເປັນວັດ) ນ້ອມໃຈໄປໃນໂສສານິກັງຄະທຸດົງ (ສະມາທານການຢູ່ປ່າຊ້າເປັນວັດ) ນ້ອມໃຈໄປໃນຍະຖາສັນຖະຕິກັງຄະທຸດົງ (ສະມາທານການຢູ່ໃນເສນາສະນະຕາມທີ່ເຂົາຈັດໃຫ້ເປັນວັດ)

ນ້ອມໃຈໄປໃນເນສັດຊິກັງຄະທຸດົງ (ສະມາທານການນັ່ງເປັນວັດ) ນ້ອມໃຈໄປໃນປະຖົມຊານ ນ້ອມໃຈໄປໃນທຸຕິຍະຊານ ນ້ອມໃຈໄປໃນຕະຕິຍະຊານ ນ້ອມໃຈໄປໃນຈະຕຸດຖະຊານ ນ້ອມໃຈໄປໃນອາກາສານັນຈາຍະຕະນະສະມາບັດ ນ້ອມໃຈໄປໃນວິນຍານັນຈາຍະຕະນະສະມາບັດ ນ້ອມໃຈໄປໃນອາກິນຈັນຍາຍະຕະນະສະມາບັດ ນ້ອມໃຈໄປໃນເນວະສັນຍານາສັນຍາຍະຕະນະສະມາບັດ" ລວມຄວາມວ່າ ຜູ້ນ້ອມໄປແລ້ວ

ຄຳວ່າ ຜູ້ມີອາກິນຈັນຍາຍະຕະນະສະມາບັດນັ້ນເປັນບ່ອນມຸ້ງໝາຍ ອະທິບາຍວ່າ ສຳເລັດມາຈາກອາກິນຈັນຍາຍະຕະນະສະມາບັດ ມີສະມາບັດນັ້ນເປັນບ່ອນມຸ້ງໝາຍ ມີກຳເປັນບ່ອນມຸ້ງໝາຍ ມີວິບາກເປັນບ່ອນມຸ້ງໝາຍ ໜັກໃນກຳ ໜັກໃນປະຕິສົນທິ

ອີກປະການໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ບຸກຄົນນີ້ ມີຮູບເປັນບ່ອນມຸ້ງໝາຍ ໗໑໗ ມີ ເນວະສັນຍານາສັນຍາຍະຕະນະສະມາບັດເປັນບ່ອນມຸ້ງໝາຍ ລວມຄວາມວ່າ ຜູ້ນ້ອມໄປແລ້ວ ຜູ້ມີອາກິນຈັນຍາຍະຕະນະສະມາບັດນັ້ນເປັນບ່ອນມຸ້ງໝາຍ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ໂປສາລະ)

ຕະຖາຄົດຮູ້ຍິ່ງເຊິ່ງວິນຍານັດຖິຕິທັງໝົດ
ຮູ້ຈັກບຸກຄົນນັ້ນຜູ້ດຳຣົງຢູ່ ຜູ້ນ້ອມໄປແລ້ວ
ຜູ້ມີອາກິນຈັນຍາຍະຕະນະສະມາບັດນັ້ນເປັນບ່ອນມຸ້ງໝາຍ

[໗໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ບຸກຄົນນັ້ນຮູ້ກຳມາພິສັງຂານວ່າເປັນເຫດເກີດ
ແຫ່ງອາກິນຈັນຍາຍະຕະນະສະມາບັດ
ຮູ້ອະຣູບປະຣາຄະວ່າມີຄວາມເພີດເພີນເປັນເຄື່ອງຜູກໄວ້
ເມື່ອຮູ້ກຳນັ້ນແນວນີ້ແລ້ວ ອອກຈາກສະມາບັດນັ້ນ
ເຫັນແຈ້ງທຳທີ່ເກີດໃນສະມາບັດນັ້ນ

ຍານນີ້ຂອງພາມຜູ້ຢູ່ຈົບພົມມະຈັນນັ້ນ
ເປັນຍານອັນແທ້ຈິງ (໔)

ຄຳວ່າ ບຸກຄົນນັ້ນຮູ້ກຳມາພິສັງຂານວ່າ ເປັນເຫດເກີດແຫ່ງອາກິນຈັນຍາຍະຕະນະ ສະມາບັດ ອະທິບາຍວ່າ ກຳມາພິສັງຂານ ອັນໃຫ້ເປັນໄປໃນອາກິນຈັນຍາຍະຕະນະພົບ ຕັດຮຽກວ່າ ເຫດເກີດແຫ່ງອາກິນຈັນຍາຍະຕະນະສະມາບັດ

ບຸກຄົນນັ້ນຮູ້ກຳມາພິສັງຂານ ອັນໃຫ້ເປັນໄປໃນອາກິນຈັນຍາຍະຕະນະພົບວ່າ ເປັນເຫດເກີດແຫ່ງອາກິນຈັນຍາຍະຕະນະສະມາບັດ ຄື ຮູ້ ຮູ້ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງວ່າ ເປັນເຫດເກາະຕິດ ເປັນເຫດຜູກພັນ ເປັນເຫດພົວພັນ ລວມຄວາມວ່າ ບຸກຄົນນັ້ນຮູ້ກຳມາພິສັງຂານວ່າ ເປັນເຫດເກີດແຫ່ງອາກິນຈັນຍາຍະຕະນະສະມາບັດ

ຄຳວ່າ ຮູ້ອະຣູບປະຣາຄະວ່າມີຄວາມເພີດເພີນເປັນເຄື່ອງຜູກໄວ້ ອະທິບາຍວ່າ ອະຣູບປະຣາຄະ ຕັດຮຽກວ່າ ຄວາມເພີດເພີນເປັນເຄື່ອງຜູກໄວ້

ບຸກຄົນນັ້ນຮູ້ກຳນັ້ນວ່າ ເກາະຕິດ ກ່ຽວພັນ ພົວພັນດ້ວຍອະຣູບປະຣາຄະ ຄື ຮູ້ ຮູ້ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງອະຣູບປະຣາຄະວ່າມີຄວາມເພີດເພີນເປັນເຄື່ອງຜູກໄວ້ ຄື ຮູ້ວ່າເປັນເຫດເກາະຕິດ ເປັນເຫດຜູກພັນ ເປັນເຫດພົວພັນ

ຄຳວ່າ ວ່າ ເປັນຄຳສົນທິ ຯລຯ ຄຳວ່າ ວ່າ ນີ້ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ ລວມຄວາມວ່າ ຮູ້ອະຣູບປະຣາຄະວ່າມີຄວາມເພີດເພີນເປັນເຄື່ອງຜູກໄວ້

ຄຳວ່າ ເມື່ອຮູ້ກຳນັ້ນແນວນີ້ແລ້ວ ອະທິບາຍວ່າ ເມື່ອຮູ້ ຄື ເມື່ອຮູ້ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງກຳນັ້ນແນວນີ້ແລ້ວ ລວມຄວາມວ່າ ເມື່ອຮູ້ກຳນັ້ນແນວນີ້ແລ້ວ

ຄຳວ່າ ອອກຈາກສະມາບັດນັ້ນ ໃນຄຳວ່າ ອອກຈາກສະມາບັດນັ້ນ ເຫັນແຈ້ງທຳທີ່ເກີດໃນສະມາບັດນັ້ນ ອະທິບາຍວ່າ ບຸກຄົນເຂົ້າອາກິນຈັນຍາຍະຕະນະສະມາບັດແລ້ວ ອອກຈາກອາກິນຈັນຍາຍະຕະນະສະມາບັດນັ້ນ ກໍເຫັນແຈ້ງ ຄື ແນມເຫັນ ແນມເບິ່ງ ເພ່ງພິນິດ ພິຈາລະນາເຫັນທຳ ຄື ຈິດແລະເຈຕະສິກ ທີ່ເກີດໃນອາກິນຈັນຍາຍະຕະນະສະມາບັດນັ້ນ ໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນໂຣກ ຯລຯ ເປັນຂອງທີ່ຕ້ອງສະລັດອອກໄປ ລວມຄວາມວ່າ ອອກຈາກສະມາບັດນັ້ນ ເຫັນແຈ້ງທຳທີ່ເກີດໃນສະມາບັດນັ້ນ

ຄຳວ່າ ຍານນີ້ ຯລຯ ນັ້ນ ເປັນຍານອັນແທ້ຈິງ ອະທິບາຍວ່າ ຍານນີ້ຂອງບຸກຄົນນັ້ນຈິງ ແທ້ ແນ່ນອນ ບໍ່ຜິດພ້ຽນ ລວມຄວາມວ່າ ຍານນີ້ ຯລຯ ນັ້ນ ເປັນຍານອັນແທ້ຈິງ

ຄຳວ່າ ຂອງພາມ ໃນຄຳວ່າ ຂອງພາມ ຜູ້ຢູ່ຈົບພົມມະຈັນ ອະທິບາຍວ່າ ທີ່ຊື່ວ່າພາມຍ້ອນເປັນຜູ້ລອຍທຳ ໗ ປະການໄດ້ແລ້ວ ຯລຯ ຜູ້ບໍ່ມີຕັນຫາແລະ ທິດຖິອາໄສ ເປັນຜູ້ພົ້ນຄົງບັນດິດຮຽກຜູ້ນັ້ນວ່າ ເປັນພາມ

ຄຳວ່າ ຂອງພາມຜູ້ຢູ່ຈົບພົມມະຈັນ ອະທິບາຍວ່າ ພຣະເສຂະ ໗ ຈຳພວກ ລວມທັງກັນລະຍານະປຸຖຸຊົນ ຍ່ອມຢູ່ ຢູ່ຮ່ວມ ຢູ່ອາໄສ ຢູ່ຄອງ ເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່

ໄດ້ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ພຣະອະຣະຫັນ ຢູ່ຈົບແລ້ວ ເຮັດກິດທີ່ຄວນເຮັດແລ້ວ ປົງພາຣະ ບັນລຸເຖິງປະໂຫຍດຕົນແລ້ວໂດຍລຳດັບ ໝົດສິ້ນສັງໂຍດໃນພົບແລ້ວ ຫຼຸດພົ້ນແລ້ວ ຍ້ອນຮູ້ຊອບ ພຣະອະຣະຫັນນັ້ນຢູ່ໃນ (ອະຣິຍະວາສະທຳ)ແລ້ວປະພຶດຈະຣະນະທຳແລ້ວໆລໆ ທ່ານບໍ່ມີການວຽນເກີດ ວຽນແກ່ ວຽນຕາຍ ແລະພົບໃໝ່ກໍບໍ່ມີອີກ ລວມຄວາມວ່າຂອງພາມຜູ້ຢູ່ຈົບພົມມະຈັນ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ບຸກຄົນນັ້ນຮູ້ກຳມາພິສັງຂານວ່າເປັນເຫດເກີດ
ແຫ່ງອາກິນຈັນຍາຍະຕະນະສະມາບັດ
ຮູ້ອະຣູບປະຣາຄະວ່າມີຄວາມເພີດເພີນເປັນເຄື່ອງຜູກໄວ້
ເມື່ອຮູ້ກຳນັ້ນແນວນີ້ແລ້ວ ອອກຈາກສະມາບັດນັ້ນ
ເຫັນແຈ້ງທຳທີ່ເກີດໃນສະມາບັດນັ້ນ
ຍານນີ້ຂອງພາມຜູ້ຢູ່ຈົບພົມມະຈັນນັ້ນ
ເປັນຍານອັນແທ້ຈິງ

ພ້ອມກັບການຈົບຄາຖາ ໆລໆ ໂປສາລະມານົບ ໆລໆ ໂດຍປະກາດວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ

**ໂປສາລະມານະວະບັນຫານິດເທດທີ ໑໔ ຈົບ**

# ໑໕. ໂມຄະຣາດມານະວະບັນຫານິດເທດ

## ວ່າດ້ວຍບັນຫາຂອງໂມຄະຣາດມານົບ

[໗໕] (ທ່ານໂມຄະຣາດທູນຖາມ ດັ່ງນີ້)

ຂ້າພຣະອົງໄດ້ທູນຖາມພຣະອົງຜູ້ສັກກະ ໒ ເທື່ອແລ້ວ
ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະຈັກຂຸ
ບໍ່ໄດ້ຊົງພະຍາກອນແກ່ຂ້າພຣະອົງ
ຂ້າພຣະອົງຮັບຮູ້ມາວ່າ
ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນເທບຣິສີ
(ຖ້າຜູ້ໃດຖາມບັນຫາ) ເຖິງ ໓ ເທື່ອ ຈະຊົງພະຍາກອນ (໑)

ຄຳວ່າ ຂ້າພຣະອົງໄດ້ທູນຖາມພຣະອົງຜູ້ສັກກະ ໘ ເທື່ອແລ້ວ ອະທິບາຍວ່າ ພາມນັ້ນໄດ້ທູນຖາມບັນຫາກັບພຣະຜູ້ມີພຣະພາກພຸດທະເຈົ້າ ໘ ເທື່ອແລ້ວ ພຣະຜູ້ມີພຣະພາກເຈົ້າຜູ້ອັນພາມນັ້ນທູນຖາມບັນຫາແລ້ວ ກໍບໍ່ໄດ້ຊົງພະຍາກອນ ດ້ວຍພຣະດຳຣິວ່າ ຄວາມແກ່ຮອບແຫ່ງອິນຊີຂອງພາມນີ້ຈັກມີໃນລຳດັບແຫ່ງຈັກຂຸ

ຄຳວ່າ ຜູ້ສັກກະ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຜູ້ສັກກະ ສະເດັດອອກບວດຈາກສາກະຍະຕະກູນ ຈຶ່ງຊື່ວ່າ ຜູ້ສັກກະ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງມັ່ງຄັ່ງ ຊົງມີຊັບຫຼາຍ ຊົງມີສົມບັດ ຈຶ່ງຊື່ວ່າ ຜູ້ສັກກະ ພຣະອົງຊົງມີຊັບເຫຼົ່ານີ້ ຄື ຊັບຄືສັດທາ ຊັບຄືສິນ ຊັບຄື ຫິຣິ ຊັບຄືໂອດຕັບປະ ຊັບຄືສຸຕະ ຊັບຄືຈາຄະ ຊັບຄືປັນຍາ ຊັບຄືສະຕິປັດຖານ ຊັບຄືສຳມັບປະທານ ຊັບຄືອິດທິບາດ ຊັບຄືອິນຊີ ຊັບ ຄື ພະລະ ຊັບຄືໂພດຊົງ ຊັບຄືມັກ ຊັບຄືຜົນ ຊັບຄືນິບພານ ພຣະຜູ້ມີພຣະພາກເຈົ້າຊົງມັ່ງຄັ່ງ ຊົງມີຊັບຫຼາຍ ຊົງມີຊັບດ້ວຍຊັບທີ່ເປັນຣັດຕະນະ ຫຼາຍຢ່າງເຫຼົ່ານີ້ ຈຶ່ງຊື່ວ່າຜູ້ສັກກະ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງສາມາດ ຄື ຊົງອົງອາດ ອາດຫານ ມີຄວາມສາມາດ ກ້າ ກ້າຫານ ກ້າວໜ້າ ບໍ່ຢ້ານ ບໍ່ຫວາດສຽວ ບໍ່ສະດຸ້ງ ບໍ່ໜີ ຊົງລະໄພ ແລະຄວາມຢ້ານກົວໄດ້ແລ້ວ ໝົດຄວາມຂົນພອງສະຫຍອງເກົ້າແລ້ວ ຈຶ່ງຊື່ວ່າຜູ້ສັກກະ

ຄຳວ່າ ຂ້າພຣະອົງໄດ້ທູນຖາມພຣະອົງຜູ້ສັກກະ ໘ ເທື່ອແລ້ວ ອະທິບາຍວ່າ ຂ້າແຕ່ພຣະອົງຜູ້ສັກກະ ຂ້າພຣະອົງໄດ້ທູນຖາມ ຄື ໄດ້ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດ ໘ ເທື່ອແລ້ວ ລວມຄວາມວ່າ ຂ້າພຣະອົງໄດ້ທູນຖາມພຣະອົງຜູ້ສັກກະ ໘ ເທື່ອແລ້ວ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານໂມຄະຣາດທູນຖາມ ດັ່ງນີ້ ເປັນບົດສົນທິ ຯລຯ

ຄຳວ່າ ທ່ານ ເປັນຄຳກ່າວດ້ວຍຄວາມຮັກ ຯລຯ

ຄຳວ່າ ໂມຄະຣາດ ເປັນຊື່ຂອງພາມນັ້ນ ຯລຯ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານໂມຄະຣາດທູນຖາມ ດັ່ງນີ້

ຄຳວ່າ ບໍ່ໄດ້ຊົງພະຍາກອນແກ່ຂ້າພຣະອົງ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະຈັກຂຸ ບໍ່ໄດ້ຊົງພະຍາກອນແກ່ຂ້າພຣະອົງ ອະທິບາຍວ່າ ບໍ່ໄດ້ຊົງພະຍາກອນ ຄື ບໍ່ໄດ້ບອກ ບໍ່ໄດ້ສະແດງ ບໍ່ໄດ້ບັນຍັດ ບໍ່ໄດ້ກຳນົດ ບໍ່ໄດ້ເປີດເຜີຍ ບໍ່ໄດ້ຈຳແນກ ບໍ່ໄດ້ເຮັດໃຫ້ງ່າຍ ບໍ່ໄດ້ຊົງປະກາດແກ່ຂ້າພຣະອົງ

## ວ່າດ້ວຍພຣະຈັກຂຸ ໕ ຊະນິດ

ຄຳວ່າ ຜູ້ມີພຣະຈັກຂຸ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າ ມີພຣະຈັກຂຸດ້ວຍພຣະຈັກຂຸ ໕ ຊະນິດ ຄື

໑. ມີພຣະຈັກຂຸດ້ວຍມັງສະຈັກຂຸແດ່
໒. ມີພຣະຈັກຂຸດ້ວຍທິບພະຈັກຂຸແດ່
໓. ມີພຣະຈັກຂຸດ້ວຍປັນຍາຈັກຂຸແດ່
໔. ມີພຣະຈັກຂຸດ້ວຍພຸດທະຈັກຂຸແດ່
໕. ມີພຣະຈັກຂຸດ້ວຍສະມັນຕະຈັກຂຸແດ່

ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸດ້ວຍມັງສະຈັກຂຸ ເປັນແນວໃດ?

ຄື ໃນພຣະມັງສະຈັກຂຸຂອງພຣະຜູ້ມີພຣະພາກເຈົ້າມີສີຢູ່ ໕ ສີ ຄື (໑) ສີຂຽວ (໒) ສີເຫຼືອງ (໓) ສີແດງ (໔) ສີດຳ (໕) ສີຂາວ ຢູ່ທີ່ທີ່ມີກັນພຣະເນດຂຶ້ນ ມີສີຂຽວສະນິດ ໜ້າຊົມ ໜ້າເບິ່ງເໝືອນດອກຜັກຕົບ ຕໍ່ຈາກນັ້ນ ກໍເປັນສີເຫຼືອງ ເຫຼືອງສະນິດ ສີເໝືອນຄຳ ໜ້າຊົມ ໜ້າເບິ່ງ ເໝືອນດອກກັນນິກາ ເບົ້າພຣະເນດທັງສອງຂ້າງຂອງພຣະຜູ້ມີພຣະພາກເຈົ້າມີສີແດງ ແດງສະນິດ ໜ້າຊົມ ໜ້າເບິ່ງ ເໝືອນສີປີກ ແມງຄັບ ກາງດວງພຣະເນດ ມີສີດຳ ດຳເຂັ້ມ ບໍ່ເສົ້າໝອງ ສະນິດ ໜ້າຊົມ ໜ້າ ເບິ່ງ ເໝືອນສີລີ້ນມໍດຳ ຕໍ່ຈາກນັ້ນ ເປັນສີຂາວ ຂາວສະນິດ ເປ່ງປັ່ງຂາວນວນ ໜ້າຊົມ ໜ້າເບິ່ງ ເໝືອນ ສີດາວປະກາຍພຶກ ພຣະຜູ້ມີພຣະພາກເຈົ້າມີພຣະມັງສະຈັກຂຸນັ້ນຢູ່ໂດຍປົກກະຕິ ເນື່ອງໃນພຣະອັດຕະພາບ ເກີດດ້ວຍສຸດຈະຣິດກຳທີ່ຊົງສັ່ງສົມມາໃນພົບກ່ອນ ຊົງແນມເບິ່ງເຫັນຕະຫຼອດ ໑ ໂຍດໂດຍຮອບ ທັງກາງເວັນແລະກາງຄືນ ແມ່ນໃນເວລາທີ່ມີຄວາມມືດປະກອບດ້ວຍອົງ ໔ ຄື (໑) ດວງອາທິດຕົກໄປແລ້ວ (໒) ເປັນວັນອຸໂປສົດຂ້າງແຮມ (໓) ປ່າຮົກທຶບ (໔) ມີເມກກ້ອນໃຫຍ່ຟຸດຂຶ້ນມາ ໃນຄວາມມືດທີ່ປະກອບດ້ວຍອົງ ໔ ແນວນີ້ ພຣະອົງກໍຊົງເບິ່ງເຫັນໄດ້ຕະຫຼອດ ໑ ໂຍດໂດຍຮອບ ບໍ່ມີຫຼຸມ ບານປະຕູ ກຳແພງ ພູເຂົາ ກໍໄມ້ ຫຼື ເຄືອເຂົາມາປິດກັ້ນການເຫັນຮູບ ທັງຫຼາຍໄດ້ ຫາກບຸກຄົນເອົາງາເມັດດຽວເຮັດເຄື່ອງໝາຍແລ້ວໃສ່ລົງໃນກວຽນບັນທຸກງາ ພຣະຜູ້ມີພຣະພາກເຈົ້າກໍຊົງສາມາດຈັບເອົາງາເມັດນັ້ນຂຶ້ນມາໄດ້ ພຣະມັງສະຈັກຂຸຕາມປົກກະຕິຂອງພຣະຜູ້ມີພຣະພາກເຈົ້າບໍລິສຸດແນວນີ້ ພຣະຜູ້ມີພຣະພາກເຈົ້າຊື່ວ່າ ມີພຣະຈັກຂຸດ້ວຍມັງສະຈັກຂຸ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸດ້ວຍທິບພະຈັກຂຸ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຊົງເຫັນໝູ່ສັດ ເຊິ່ງກຳລັງຈຸຕິ ກຳລັງອຸບັດ ຊົ່ວ ປະນີດຜິວພັນດີ ຜິວພັນຊາມ ໄປດີ ຕົກຍາກ ດ້ວຍທິບພະຈັກຂຸອັນບໍລິສຸດລ່ວງຈັກຂຸມະນຸດ ຊົງຮູ້ໝູ່ສັດຜູ້ເປັນໄປຕາມກຳ ຯລຯ ແລະພຣະຜູ້ມີພຣະພາກເຈົ້າເມື່ອຊົງປະສົງເພິ່ງຊົງເຫັນໄດ້ ແມ່ນ ໑ ໂລກທາດ ຯລຯ ແມ່ນ ໒ ໂລກທາດ ຯລຯ ແມ່ນ ໓ ໂລກທາດ ຯລຯ ແມ່ນ ໔ ໂລກທາດ ຯລຯ ແມ່ນ ໕ ໂລກທາດ ຯລຯ ແມ່ນ ໑໐ ໂລກທາດ ຯລຯ ແມ່ນ ໒໐ ໂລກທາດ ຯລຯ ແມ່ນ ໓໐ ໂລກທາດ ຯລຯ ແມ່ນ ໔໐ ໂລກທາດ ຯລຯ ແມ່ນ ໕໐ ໂລກທາດ ຯລຯ ແມ່ນ ໑໐໐ ໂລກທາດ ຯລຯ ແມ່ນໂລກທາດຂະໜາດນ້ອຍປະກອບດ້ວຍ ໑,໐໐໐ ຈັກກະວານ ຯລຯ ແມ່ນໂລກທາດຂະໜາດກາງປະກອບດ້ວຍ ໒,໐໐໐ ຈັກກະວານ ຯລຯ ແມ່ນໂລກທາດຂະໜາດໃຫຍ່ປະກອບດ້ວຍ ໓,໐໐໐ ຈັກກະວານ ຯລຯ ແມ່ນໂລກທາດທີ່ປະກອບດ້ວຍຫຼາຍພັນຈັກກະວານ

ພຣະຜູ້ມີພຣະພາກເຈົ້າຊົງປະສົງພຽງໃດກໍເພິ່ງຊົງເຫັນໄດ້ພຽງນັ້ນ ທິບພະຈັກຂຸຂອງພຣະຜູ້ມີພຣະພາກເຈົ້າບໍລິສຸດແນວນີ້ ພຣະຜູ້ມີພຣະພາກເຈົ້າຊື່ວ່າ ມີພຣະຈັກຂຸດ້ວຍທິບພະຈັກຂຸ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸດ້ວຍປັນຍາຈັກຂຸ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະປັນຍາຫຼາຍ ມີພຣະປັນຍາກວ້າງຂວາງ ມີພຣະປັນຍາສັບໄວ ມີພຣະປັນຍາອາດຫານ ມີພຣະປັນຍາສຽບຄົມ ມີພຣະປັນຍາເພີກຖອນກິເລດໄດ້ ຊົງສະຫຼາດໃນປະເພດແຫ່ງປັນຍາ ມີພຣະຍານແຕກສານ ຊົງບັນລຸປະຕິສໍາພິທາ ຊົງບັນລຸເວສາຣັດຊະຍານ ໔ ຊົງເປັນຜູ້ຊົງທະສະພົນຍານ ຊົງເປັນບຸຣຸດອົງອາດ ຊົງເປັນບຸຣຸດເໝືອນຣາດຊະສີ ຊົງເປັນບຸຣຸດເໝືອນນາກ ຊົງເປັນບຸຣຸດອາຊາໄນ ຊົງເປັນບຸຣຸດຜູ້ເອົາທຸຣະ ມີພຣະຍານຫາບ່ອນສຸດບໍ່ໄດ້ ມີພຣະເດດຫາບ່ອນສຸດບໍ່ໄດ້ ມີພຣະຍົດຫາບ່ອນສຸດບໍ່ໄດ້ ຊົງມັ່ງຄັ່ງ ຊົງມີຊັບຫຼາຍ ຊົງມີປັນຍາເປັນຊັບ ຊົງເປັນຜູ້ນໍາ ເປັນຜູ້ນໍາໄປໂດຍວິເສດ ເປັນຜູ້ຕາມແນະນໍາ ຊົງໃຫ້ຮູ້ຈັກປະໂຫຍດ ໃຫ້ຄິດໄວ້ພິຈາລະນາ ຊົງເພ່ງປະໂຫຍດ ຊົງເຮັດໃຫ້ເຫຼື້ອມໃສໄດ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງເຮັດມັກທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຊົງເຮັດມັກທີ່ຍັງບໍ່ເກີດພ້ອມໃຫ້ເກີດພ້ອມ ຕັດບອກມັກທີ່ຍັງບໍ່ໄດ້ຕັດບອກ ຊົງຮູ້ຈັກມັກ ຊົງຮູ້ແຈ້ງມັກ ຊົງສະຫຼາດໃນມັກ ແລະສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ດໍາເນີນໄປຕາມມັກຢູ່ໃນບັດນີ້ ຈະພຽບພ້ອມດ້ວຍສີລາທິຄຸນໃນພາຍຫຼັງ

ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງຮູ້ທໍາທີ່ຄວນຮູ້ ຊົງເຫັນທໍາທີ່ຄວນເຫັນ ມີພຣະຈັກຂຸ ມີພຣະຍານ ມີພຣະທໍາ ເປັນເໝືອນພຣະພົມ ຕັດບອກ ນໍາຄວາມໝາຍອອກມາ ປະທານອະມະຕະທໍາ ເປັນພຣະທໍາສາມີ ເປັນພຣະຕະຖາຄົດ ບໍ່ມີສິ່ງທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຍັງບໍ່ຊົງຮູ້ ບໍ່ຊົງເຫັນ ບໍ່ຊົງຮູ້ແຈ້ງ ບໍ່ຊົງເຮັດໃຫ້ແຈ້ງ ບໍ່ໄດ້ຊົງຖືກຕ້ອງດ້ວຍປັນຍາ ທໍາທັງປວງ ລວມທັງອະດີດ ອະນາຄົດ ແລະປັດຈຸບັນ ຍ່ອມມາສ຺ູ່ຄອງສະເພາະພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ໂດຍອາການທັງປວງ ທໍາມະດາປະໂຫຍດທີ່ຄວນແນະນໍາແນວໃດແນວໜຶ່ງ ເປັນທໍາທີ່ຄວນຮູ້ມີຢູ່ ຄື ປະໂຫຍດຕົນ ປະໂຫຍດຜູ້ອື່ນ ຫຼື ປະໂຫຍດທັງສອງຝ່າຍ ປະໂຫຍດໃນພົບປັດຈຸບັນ ຫຼື ປະໂຫຍດໃນພົບໜ້າ ປະໂຫຍດຕື້ນ ຫຼື ປະໂຫຍດເລິກ ປະໂຫຍດລີ້ລັບ ຫຼື ປະໂຫຍດປິດບັງ ປະໂຫຍດທີ່ຄວນແນະນໍາ ຫຼື ປະໂຫຍດທີ່ແນະນໍາແລ້ວ ປະໂຫຍດທີ່ບໍ່ມີໂທດ ຫຼື ປະໂຫຍດທີ່ບໍ່ມີກິເລດ ປະໂຫຍດທີ່ຜ່ອງແຜ້ວ ຫຼື ປະໂຫຍດຢ່າງຍິ່ງ ປະໂຫຍດທັງໝົດນັ້ນຍ່ອມເປັນໄປພາຍໃນພຣະພຸດທະຍານ

ກາຍຍະກໍາ ວະຈີກໍາ ມະໂນກໍາທຸກຢ່າງ ຍ່ອມເປັນໄປຕາມພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ບໍ່ຕິດຂັດໃນອະດີດ ອະນາຄົດ ປັດຈຸບັນ ບົດທໍາທີ່ຄວນແນະນໍາມີຢູ່ພຽງໃດ ພຣະຍານກໍມີພຽງນັ້ນ ພຣະຍານມີຢູ່ພຽງໃດ ບົດທໍາ

ທີ່ຄວນແນະນຳກໍມີພຽງນັ້ນ ພຣະຍານຍ່ອມມີບົດທຳທີ່ຄວນແນະນຳເປັນສ່ວນສຸດຮອບ ບົດທຳທີ່ຄວນແນະນຳກໍຍ່ອມມີພຣະຍານເປັນສ່ວນສຸດຮອບ ພຣະຍານຍ່ອມບໍ່ເປັນໄປເກີນບົດທຳທີ່ຄວນແນະນຳ ທາງແຫ່ງບົດທຳທີ່ຄວນແນະນຳກໍມີຢູ່ບໍ່ເກີນກວ່າພຣະຍານ ທຳເຫຼົ່ານັ້ນຕັ້ງຢູ່ໃນສ່ວນສຸດຮອບຂອງກັນແລະກັນ ເໝືອນຊັ້ນແຫ່ງຜະອົບ ໔ ຊັ້ນ ເຕັງກັນແຈບພໍດີ ຊັ້ນຜະອົບດ້ານລຸ່ມກໍບໍ່ເກີນດ້ານເທິງ ຊັ້ນຜະອົບດ້ານເທິງກໍບໍ່ເກີນດ້ານລຸ່ມ ຊັ້ນຜະອົບທັງ ໔ ຍ່ອມວາງປະກົບເຂົ້າກັນໄດ້ໃນສ່ວນສຸດໂດຍຮອບຂອງກັນແລະກັນ ສັນໃດ ບົດທຳທີ່ຄວນແນະນຳ ແລະພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ກໍຕັ້ງຢູ່ໃນສ່ວນສຸດຮອບຂອງກັນແລະກັນສັນນັ້ນຄືກັນ ບົດທຳທີ່ຄວນແນະນຳມີຢູ່ພຽງໃດ ພຣະຍານກໍມີຢູ່ພຽງນັ້ນ ພຣະຍານມີຢູ່ພຽງໃດ ບົດທຳທີ່ຄວນແນະນຳກໍມີພຽງນັ້ນ ພຣະຍານຍ່ອມມີບົດທຳທີ່ຄວນແນະນຳເປັນສ່ວນສຸດຮອບ ບົດທຳທີ່ຄວນແນະນຳກໍຍ່ອມມີພຣະຍານເປັນສ່ວນສຸດຮອບ ພຣະຍານຍ່ອມບໍ່ເປັນໄປເກີນກວ່າບົດທຳທີ່ຄວນແນະນຳ ທາງແຫ່ງບົດທຳທີ່ຄວນແນະນຳກໍມີຢູ່ບໍ່ເກີນກວ່າພຣະຍານ ທຳເຫຼົ່ານັ້ນຍ່ອມຕັ້ງຢູ່ໃນສ່ວນສຸດຮອບຂອງກັນແລະກັນ

ພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ຍ່ອມເປັນໄປໃນທຳທັງປວງ ທຳທັງປວງນັບເນື່ອງດ້ວຍຄວາມນຶກ ນັບເນື່ອງດ້ວຍຄວາມຫວັງ ນັບເນື່ອງດ້ວຍມະນະສິການ ນັບເນື່ອງດ້ວຍຈິດຕຸບບາດຂອງພຣະຜູ້ມີພຣະພາກພຸດທະເຈົ້າ ພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າຍ່ອມເປັນໄປໃນສັດທັງປວງ ພຣະຜູ້ມີພຣະພາກເຈົ້າຊົງຮູ້ອັດທະຍາໄສ ອະນຸໄສ ຈະຣິດ ອະທິມຸດຕິຂອງເຫຼົ່າສັດທຸກຈຳພວກ ຊົງຮູ້ຈັກເຫຼົ່າສັດ ຜູ້ມີກິເລດເໝືອນທຸລີໜ້ອຍໃນປັນຍາຈັກຂຸ ມີກິເລດເໝືອນທຸລີຫຼາຍໃນປັນຍາຈັກຂຸ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ຜູ້ທີ່ແນະນຳໃຫ້ຮູ້ໄດ້ງ່າຍ ຜູ້ທີ່ແນະນຳໃຫ້ຮູ້ໄດ້ຍາກ ເປັນພັບພະສັດ (ຜູ້ສົມຄວນບັນລຸທຳ) ແລະອະພັບພະສັດ (ຜູ້ບໍ່ສົມຄວນບັນລຸທຳ) ໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ຍ່ອມເປັນໄປພາຍໃນພຣະພຸດທະຍານ ປາ ແລະເຕົ່າຊະນິດໃດຊະນິດໜຶ່ງ ລວມທັງປາຕິມິ ປາຕິມິງຄະລະ ແລະປາຕິມິຕິມິງຄະ ຍ່ອມເປັນໄປພາຍໃນມະຫາສະມຸດ ສັນໃດ ໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ຍ່ອມເປັນໄປພາຍໃນພຣະຍານຂອງພຣະພຸດທະເຈົ້າ ສັນນັ້ນຄືກັນ ນົກຊະນິດໃດຊະນິດໜຶ່ງ ລວມທັງຄຸດນາມວ່າ ເວນໄຕຍະ ຍ່ອມບິນໄປໃນຫ້ອງແຫ່ງອາກາດ ສັນໃດ ພຣະພຸດທະສາວົກທັງຫຼາຍ ຜູ້ສະເໝີກັບພຣະສາຣີບຸດດ້ວຍປັນຍາ ຍ່ອມເປັນໄປໃນສ່ວນແຫ່ງພຣະພຸດທະຍານ ສັນນັ້ນຄືກັນ ພຣະພຸດທະຍານຍ່ອມແຜ່ຄອບຄຸມປັນຍາຂອງເທວະດາແລະມະນຸດຢູ່

ເຫຼົ່າບັນດິດຜູ້ເປັນກະສັດ ເປັນພາມ ເປັນຄະຫະບໍດີ ເປັນສະມະນະ ຜູ້ມີປັນຍາລະອຽດ ຮູ້ວາທະຂອງຜູ້ອື່ນ ເໝືອນນາຍຂະມັງທະນູສາມາດຍິງເນື້ອຊາຍໄດ້ ເໝືອນຈະທ່ຽວ ທຳລາຍທິດຖິຜູ້

ອື່ນດ້ວຍປັນຍາຕົນ ບັນດິດເຫຼົ່ານັ້ນພາກັນປຸງແຕ່ງບັນຫາແລ້ວ ເຂົ້າໄປເຝົ້າພຣະຕະຖາຄົດ ທູນຖາມບັນຫາທີ່ລີ້ລັບແລະປິດບັງ ບັນຫາເຫຼົ່ານັ້ນ ທີ່ພຣະຜູ້ມີພຣະພາກເຈົ້າຊົງ ຕັດແກ້ແລ້ວ ເປັນບັນຫາມີເຫດໃຫ້ຊົງສະແດງ ບັນດິດເຫຼົ່ານັ້ນຖືກດຶງດູດດ້ວຍການວິສັດຊະນາບັນຫາ ຈຶ່ງເຫຼື້ອມໃສພຣະຜູ້ມີພຣະພາກເຈົ້າ ໂດຍທີ່ແທ້ພຣະຜູ້ມີພຣະພາກເຈົ້າຍ່ອມຊົງຮຸ່ງເຮືອງດ້ວຍພຣະປັນຍາໃນໝູ່ຄົນເຫຼົ່ານັ້ນ ພຣະຜູ້ມີພຣະພາກເຈົ້າຊື່ວ່າ ມີພຣະຈັກຂຸດ້ວຍ ປັນຍາຈັກຂຸ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸດ້ວຍພຸດທະຈັກຂຸ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າເມື່ອຊົງກວດເບິ່ງສັດໂລກດ້ວຍພຸດທະຈັກຂຸ ໄດ້ຊົງເຫັນສັດທັງຫຼາຍຜູ້ມີກິເລດ ເໝືອນທຸລີໜ້ອຍໃນປັນຍາຈັກຂຸ ຜູ້ມີກິເລດເໝືອນທຸລີຫຼາຍໃນປັນຍາຈັກຂຸ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ຜູ້ທີ່ແນະນຳໃຫ້ຮູ້ໄດ້ງ່າຍ ຜູ້ທີ່ແນະນຳໃຫ້ຮູ້ໄດ້ຍາກ ບາງພວກເປັນຜູ້ເຫັນໂທດ ແລະໄພໃນປະຣະໂລກຢູ່ກໍມີ ເໝືອນໃນກໍບົວຂຽວ ໃນກໍບົວແດງ ຫຼືໃນກໍບົວຂາວ ດອກບົວຂຽວ ດອກບົວແດງ ຫຼື ດອກບົວຂາວ ບາງເຫຼົ່າເກີດໃນນ້ຳຈະເລີນໃນນ້ຳ ຂຶ້ນຕາມນ້ຳ ຈົມຢູ່ໃນນ້ຳ ແລະນ້ຳຫຼໍ່ລ້ຽງໄວ້ ດອກບົວຂຽວ ດອກບົວແດງ ຫຼື ດອກບົວຂາວ ບາງເຫຼົ່າເກີດໃນນ້ຳ ຈະເລີນໃນນ້ຳ ຕັ້ງຢູ່ ສະເໝີພື້ນນ້ຳ ດອກບົວຂຽວ ດອກບົວແດງ ຫຼືດອກບົວຂາວ ບາງເຫຼົ່າເກີດໃນນ້ຳ ຈະເລີນໃນນ້ຳ ຜຸດຂຶ້ນພົ້ນຣະດັບນ້ຳ ນ້ຳບໍ່ຕິດເປື້ອນຢູ່ເລີຍສັນໃດ ພຣະຜູ້ມີພຣະພາກເຈົ້າ ເມື່ອຊົງກວດເບິ່ງສັດໂລກດ້ວຍພຸດທະຈັກຂຸ ໄດ້ຊົງເຫັນສັດທັງຫຼາຍຜູ້ມີກິເລດເໝືອນທຸລີໜ້ອຍໃນປັນຍາຈັກຂຸ ຜູ້ມີກິເລດ ເໝືອນທຸລີຫຼາຍໃນປັນຍາຈັກຂຸ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ຜູ້ທີ່ແນະນຳໃຫ້ຮູ້ໄດ້ງ່າຍ ຜູ້ທີ່ແນະນຳໃຫ້ຮູ້ໄດ້ຍາກ ບາງພວກເປັນຜູ້ເຫັນໂທດ ແລະໄພໃນປະຣະໂລກຢູ່ກໍມີ ສັນນັ້ນຄືກັນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ບຸກຄົນນີ້ມີຣາຄະຈະຣິດ ບຸກຄົນນີ້ມີໂທສະຈະຣິດ ບຸກຄົນນີ້ມີໂມຫະຈະຣິດ ບຸກຄົນນີ້ມີວິຕົກຈະຣິດ ບຸກຄົນນີ້ມີສັດທາຈະຣິດ ບຸກຄົນນີ້ມີຍານຈະຣິດ ພຣະຜູ້ມີພຣະພາກເຈົ້າຍ່ອມຕັດອະສຸພະກະຖາແກ່ບຸກຄົນຣາຄະຈະຣິດ ຕັດການຈະເລີນເມດຕາແກ່ບຸກຄົນໂທສະຈະຣິດ ຍ່ອມຊົງແນະນຳບຸກຄົນ ໂມຫະຈະຣິດໃຫ້ດຳຣົງຢູ່ໃນການຮ່ຳຮຽນ ການໄຕ່ຖາມ ການຟັງທຳຕາມການ ການສົນທະນາທຳຕາມການ ການຢູ່ຮ່ວມກັບຄູ ຍ່ອມຕັດອານາປານັດສະຕິແກ່ບຸກຄົນວິຕົກຈະຣິດ ຕັດບອກນິມິດທີ່ໜ້າເຫຼື້ອມໃສ ຄວາມຕັດສະຣູ້ຊອບຂອງພຣະພຸດທະເຈົ້າ ຄວາມເປັນທຳດີແຫ່ງພຣະທຳ ການປະຕິບັດຊອບຂອງພຣະສົງ ແລະສິນຂອງຕົນທີ່ໜ້າເຫຼື້ອມໃສແກ່ບຸກຄົນສັດທາຈະຣິດ ຍ່ອມຕັດທຳອັນເປັນນິມິດແຫ່ງວິປັດສະນາ ມີອາການບໍ່ທ່ຽງ ມີອາການເປັນທຸກ ມີອາການເປັນອະນັດຕາແກ່ບຸກຄົນຍານະຈະຣິດ (ສົມຈິງດັ່ງຄາຖາປະພັນວ່າ)

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າຜູ້ມີປັນຍາດີ ມີສະມັນຕະຈັກຂຸ
ບຸຣຸດຜູ້ຢືນຢູ່ເທິງຍອດພູເຂົາສີລາລ້ວນ
ເພິ່ງເຫັນໝູ່ຊົນໂດຍຮອບ ແມ່ນສັນໃດ

ພຣະອົງຜູ້ໝົດຄວາມໂສກແລ້ວ
ໂຜດສະເດັດຂຶ້ນສູ່ຜາສາດຄືທຳ
ຈັກໄດ້ເຫັນໝູ່ຊົນຜູ້ຕົກຢູ່ໃນຄວາມເສົ້າໂສກ
ແລະຖືກຊາດຊະຣາຄອບງຳໄດ້ຊັດເຈນ ສັນນັ້ນ

ພຣະຜູ້ມີພຣະພາກເຈົ້າຊື່ວ່າ ມີພຣະຈັກຂຸດ້ວຍພຸດທະຈັກຂຸ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸດ້ວຍສະມັນຕະຈັກຂຸ ເປັນແນວໃດ?

ຄື ພຣະສັບພັນຍຸຕະຍານ ຕັດຮຽກວ່າ ສະມັນຕະຈັກຂຸ ພຣະຜູ້ມີພຣະພາກເຈົ້າຊົງປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມແລ້ວດ້ວຍພຣະສັບພັນຍຸຕະຍານ (ສົມຈິງດັ່ງຄາຖາປະພັນວ່າ)

ສິ່ງໃດ ໆ ໃນໄຕຣໂລກທາດນີ້
ພຣະປັນຍາຈັກຂຸຂອງພຣະຕະຖາຄົດນັ້ນບໍ່ເຫັນ ບໍ່ມີເລີຍ
ອັນໜຶ່ງ ທຳມະຊາດອັນໃດ ໆ ທີ່ຄວນຮູ້
ພຣະພຸດທະຍານບໍ່ຮູ້ແຈ້ງກໍບໍ່ມີ
ທຳມະຊາດທີ່ຄວນແນະນຳໃດມີຢູ່
ພຣະຕະຖາຄົດໄດ້ຊົງຮູ້ທຳມະຊາດທີ່ຄວນແນະນຳນັ້ນທັງໝົດ
ຍ້ອນເຫດນັ້ນ ພຣະຕະຖາຄົດຈຶ່ງຊື່ວ່າ ຜູ້ມີສະມັນຕະຈັກຂຸ

ພຣະຜູ້ມີພຣະພາກເຈົ້າຊື່ວ່າມີພຣະຈັກຂຸດ້ວຍສະມັນຕະຈັກຂຸ ເປັນແນວນີ້ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າ ຜູ້ມີພຣະຈັກຂຸ ບໍ່ໄດ້ຊົງພະຍາກອນແກ່ຂ້າພຣະອົງ

ຄຳວ່າ ຂ້າພຣະອົງຮັບຮູ້ມາວ່າ ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນເທບຣືສີ (ຖ້າຜູ້ໃດຖາມບັນຫາ) ເຖິງ ໓ ເທື່ອ ຈະຊົງພະຍາກອນ ອະທິບາຍວ່າ ຂ້າພຣະອົງຮຽນຮູ້ມາ ຄື ຊົງຈຳມາກຳນົດມາ ຢ່າງນີ້ວ່າ ພຣະພຸດທະເຈົ້າ (ຖ້າ) ຜູ້ໃດທູນຖາມບັນຫາຄວນແກ່ເຫດເຖິງ ໓ ເທື່ອຈະຊົງພະຍາກອນ ຈະບໍ່ຊົງປະຕິເສດ

## ວ່າດ້ວຍພຣະຜູ້ມີພຣະພາກເຈົ້າຊື່ວ່າ ເທບຣືສີ

ຄຳວ່າ ຜູ້ຊົງເປັນເທບຣືສີ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າ ຊົງເປັນທັງເທບ ເປັນທັງຣືສີ ຈຶ່ງຊື່ວ່າຊົງເປັນເທບຣືສີ ພຣະຣາຊາບວດກໍຮຽກກັນວ່າ ຣາດຊະຣືສີ ພາມບວດກໍຮຽກກັນວ່າ ພາມຣືສີ ສັນໃດ ພຣະຜູ້ມີພຣະພາກເຈົ້າກໍສັນນັ້ນ ຊົງເປັນທັງເທບເປັນທັງຣືສີ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າ ບວດແລ້ວຈຶ່ງຊື່ວ່າພຣະຣືສີ ຊົງສະແຫວງຫາ ຄືຄົ້ນຫາ ເສາະຫາສີນຂັນໃຫຍ່ ຈຶ່ງຊື່ວ່າພຣະຣືສີ ຊົງສະແຫວງຫາ ຄື ຄົ້ນຫາ ເສາະຫາສະມາທິ

ຂັນໃຫຍ່ ໆລໆ ປັນຍາຂັນໃຫຍ່ ໆລໆ ວິມຸດຕິຂັນໃຫຍ່ ໆລໆ ວິມຸດຕິຍານະທັດສະນະຂັນໃຫຍ່ ຈຶ່ງຊື່ວ່າ ພຣະຣືສີ

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄື ຄົ້ນຫາ ເສາະຫາເຄື່ອງທຳລາຍກອງຄວາມມືດໃຫຍ່ ຈຶ່ງຊື່ວ່າ ພຣະຣືສີ

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງທຳລາຍຄວາມວິປະລາດໃຫຍ່ຈຶ່ງຊື່ວ່າ ພຣະຣືສີ

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງຖອນລູກສອນຄືຕັນຫາໃຫຍ່ ຈຶ່ງຊື່ວ່າ ພຣະຣືສີ

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງປົດເປື້ອງໂຄງທິດຖິໃຫຍ່ ຈຶ່ງຊື່ວ່າ ພຣະຣືສີ

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງກຳຈັດທຸງຄືມານະໃຫຍ່ ຈຶ່ງຊື່ວ່າ ພຣະຣືສີ

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງເຂົ້າໄປສະງົບອະພິສັງຂານໃຫຍ່ ຈຶ່ງຊື່ວ່າ ພຣະຣືສີ

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງປິດກັ້ນໂອຄະໃຫຍ່ ຈຶ່ງຊື່ວ່າ ພຣະຣືສີ

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງວາງພາຣະໃຫຍ່ ຈຶ່ງຊື່ວ່າ ພຣະຣືສີ

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງຕັດສັງສາຣະວັດໃຫຍ່ ຈຶ່ງຊື່ວ່າ ພຣະຣືສີ

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງດັບຄວາມເດືອດຮ້ອນໃຫຍ່ ຈຶ່ງຊື່ວ່າ ພຣະຣືສີ

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງຣະງັບຄວາມຮ້ອນຮົນໃຫຍ່ຈຶ່ງຊື່ວ່າ ພຣະຣືສີ

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາເຄື່ອງຍົກທຸງຄືທຳໃຫຍ່ ຈຶ່ງຊື່ວ່າ ພຣະຣືສີ

ພຣະຜູ້ມີພຣະພາກເຈົ້າຊົງສະແຫວງຫາ ຄົ້ນຫາ ເສາະຫາສະຕິປັດຖານໃຫຍ່ ໆລໆ ສຳມັບປະທານໃຫຍ່ ໆລໆ ອິດທິບາດໃຫຍ່ ໆລໆ ອິນຊີໃຫຍ່ ໆລໆ ພະລະໃຫຍ່ ໆລໆ ໂພດຊົງໃຫຍ່ ໆລໆ ອະຣິຍະມັກມີອົງ ໘ ໃຫຍ່ ໆລໆ ປະຣະມັດຖະອະມະຕະນິບພານໃຫຍ່ ຈຶ່ງຊື່ວ່າ ພຣະຣືສີ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ທີ່ເຫຼົ່າສັດຜູ້ມະເຫສັກສະແຫວງຫາ ຄົ້ນຫາ ເສາະຫາວ່າ ພຣະພຸດທະເຈົ້າປະທັບຢູ່ບ່ອນໃດ ພຣະຜູ້ຊົງເປັນເທບຍິ່ງກວ່າເທບປະທັບຢູ່ບ່ອນ

ໃດພຣະຜູ້ຊົງອິງອາດກວ່ານໍຣະຊົນປະທັບຢູ່ບ່ອນໃດ ຈຶ່ງຊື່ວ່າ ພຣະຣືສີ ລວມຄວາມວ່າ ຂ້າພຣະອົງຮັບຮູ້ມາວ່າ ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນເທບຣືສີ (ຖ້າຜູ້ໃດຖາມບັນຫາ) ເຖິງ ໓ ເທື່ອ ຈະຊົງພະຍາກອນ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນ ວ່າ

(ທ່ານໂມຄະຣາດທູນຖາມດັ່ງນີ້)

ຂ້າພຣະອົງໄດ້ທູນຖາມພຣະອົງຜູ້ສັກກະ ໒ ເທື່ອແລ້ວ
ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະຈັກຂຸ
ບໍ່ໄດ້ຊົງພະຍາກອນແກ່ຂ້າພຣະອົງ
ຂ້າພຣະອົງຮັບຮູ້ມາວ່າ
ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນເທບຣືສີ
(ຖ້າຜູ້ໃດຖາມບັນຫາ) ເຖິງ ໓ ເທື່ອ ຈະຊົງພະຍາກອນ

[໗໖] (ທ່ານໂມຄະຣາດທູນຖາມວ່າ)

ໂລກນີ້ ໂລກອື່ນ ພົມມະໂລກພ້ອມທັງເທວະໂລກ
ຍ່ອມບໍ່ຮູ້ແຈ້ງຄວາມເຫັນຂອງພຣະອົງ
ຜູ້ໂຄຕະມະໂຄດ ຜູ້ມີພຣະຍົດ (໘)

ຄຳວ່າ ໂລກນີ້ ໃນຄຳວ່າ ໂລກນີ້ ໂລກອື່ນ ໄດ້ແກ່ ມະນຸດໂລກ

ຄຳວ່າ ໂລກອື່ນ ໄດ້ແກ່ ໂລກອື່ນທັງໝົດ ເວັ້ນມະນຸດໂລກ ລວມຄວາມວ່າ ໂລກນີ້ ໂລກອື່ນ

ຄຳວ່າ ພົມມະໂລກພ້ອມທັງເທວະໂລກ ໄດ້ແກ່ ພົມມະໂລກ ພ້ອມທັງເທວະໂລກ ມານໂລກ ໝູ່ສັດ ພ້ອມທັງສະມະນະພາມ ພ້ອມທັງເທວະດາ ແລະມະນຸດ ລວມຄວາມວ່າ ພົມມະໂລກພ້ອມທັງເທວະໂລກ

ຄຳວ່າ ຍ່ອມບໍ່ຮູ້ແຈ້ງຄວາມເຫັນຂອງພຣະອົງ ອະທິບາຍວ່າ ຊາວໂລກບໍ່ຮູ້ ບໍ່ຮູ້ ຄື ບໍ່ເຫັນ ບໍ່ແນມເຫັນ ບໍ່ປະສົບ ບໍ່ພົບ ບໍ່ໄດ້ສະເພາະຄວາມເຫັນ ຄື ຄວາມຖືກໃຈ ຄວາມພໍໃຈ ລັດທິ ອັດທະຍາໄສ ຄວາມປະສົງຂອງພຣະອົງວ່າ ພຣະຜູ້ມີພຣະພາກເຈົ້ານີ້ ຊົງມີຄວາມເຫັນແນວນີ້ ມີຄວາມຖືກໃຈແນວນີ້ ມີຄວາມພໍໃຈແນວນີ້ ມີລັດທິແນວນີ້ ມີອັດທະຍາໄສແນວນີ້ ມີຄວາມປະສົງແນວນີ້ ລວມຄວາມວ່າ ຍ່ອມບໍ່ຮູ້ແຈ້ງຄວາມເຫັນຂອງພຣະອົງ

ຄຳວ່າ ຜູ້ໂຄຕະມະໂຄດ ຜູ້ມີພຣະຍົດ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າ ຊົງພຽບພ້ອມດ້ວຍພຣະຍົດ ຈຶ່ງຊື່ວ່າຜູ້ມີພຣະຍົດ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າເປັນຜູ້ທີ່ຊາວໂລກສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມ ຊຶ່ງໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຈຶ່ງຊື່ວ່າຜູ້ມີພຣະຍົດ ລວມຄວາມວ່າ ຜູ້ໂຄຕະມະໂຄດ ຜູ້ມີພຣະຍົດ ດ້ວຍເຫດນັ້ນ ພາມຈຶ່ງຂາບທູນວ່າ

ໂລກນີ້ ໂລກອື່ນ ພົມມະໂລກພ້ອມທັງເທວະໂລກ
ຍ່ອມບໍ່ຮູ້ແຈ້ງຄວາມເຫັນຂອງພຣະອົງ
ຜູ້ໂຄຕະມະໂຄດ ຜູ້ມີພຣະຍົດ

[໘໗] (ທ່ານໂມຄະຣາດທູນຖາມວ່າ)

ຂ້າພຣະອົງມີບັນຫາທີ່ຈະທູນຖາມຈຶ່ງມາເຝົ້າພຣະອົງ
ຜູ້ຊົງມີປົກກະຕິເຫັນທຳອັນງາມແນວນີ້
ບຸກຄົນພິຈາລະນາເຫັນໂລກແນວໃດ ມັດຈຸຣາດຈຶ່ງບໍ່ເຫັນ (໓)

ຄຳວ່າ ຜູ້ຊົງມີປົກກະຕິເຫັນທຳອັນງາມແນວນີ້ ອະທິບາຍວ່າ ຜູ້ຊົງມີປົກກະຕິເຫັນທຳອັນງາມ ຄື ເຫັນທຳອັນເລີດ ເຫັນທຳອັນປະເສີດ ທຳອັນວິເສດສຸດ ເຫັນທຳຊັ້ນແນວໜ້າ ເຫັນທຳສູງສຸດ ເຫັນທຳອັນປະເສີດແນວນີ້ ລວມຄວາມວ່າ ຜູ້ຊົງມີປົກກະຕິເຫັນທຳອັນງາມແນວນີ້

ຄຳວ່າ ຂ້າພຣະອົງມີບັນຫາທີ່ຈະທູນຖາມຈຶ່ງມາເຝົ້າ ອະທິບາຍວ່າ ຂ້າພຣະອົງມີຄວາມຕ້ອງການບັນຫາຈຶ່ງມາເຝົ້າ ຯລຯ ຂໍ້ນີ້ຈຶ່ງເປັນພາຣະຂອງພຣະອົງ ລວມຄວາມວ່າ ຂ້າພຣະອົງມີບັນຫາທີ່ຈະທູນຖາມຈຶ່ງມາເຝົ້າ ແນວນີ້ແດ່

ຄຳວ່າ ບຸກຄົນພິຈາລະນາເຫັນໂລກແນວໃດ ອະທິບາຍວ່າ ບຸກຄົນຜູ້ພິຈາລະນາເຫັນ ຄື ປະຈັກແຈ້ງ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແນວໃດ ລວມຄວາມວ່າ ບຸກຄົນພິຈາລະນາເຫັນໂລກແນວໃດ

ຄຳວ່າ ມັດຈຸຣາດຈຶ່ງບໍ່ເຫັນ ອະທິບາຍວ່າ ມັດຈຸຣາດຈຶ່ງບໍ່ເຫັນ ຄື ບໍ່ແນມເຫັນ ບໍ່ປະສົບ ບໍ່ພົບ ບໍ່ໄດ້ສະເພາະ ລວມຄວາມວ່າ ມັດຈຸຣາດຈຶ່ງບໍ່ເຫັນ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ຂ້າພຣະອົງມີບັນຫາທີ່ຈະທູນຖາມຈຶ່ງມາເຝົ້າພຣະອົງ
ຜູ້ຊົງມີປົກກະຕິເຫັນທຳອັນງາມແນວນີ້
ບຸກຄົນພິຈາລະນາເຫັນໂລກແນວໃດ ມັດຈຸຣາດຈຶ່ງບໍ່ເຫັນ

[໘໘] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

ໂມຄະຣາດ ທ່ານຈົ່ງພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ
ມີສະຕິທຸກເມື່ອ ເພິ່ງຖອນອັດຕານຸທິດຖິສາ

ເປັນຜູ້ຂ້າມມັດຈຸຣາດສາໄດ້ ດ້ວຍອາການແນວນີ້
ບຸກຄົນພິຈາລະນາເຫັນໂລກຢູ່ແນວນີ້ ມັດຈຸຣາດຈຶ່ງແນມບໍ່ເຫັນ (໔)

## ວ່າດ້ວຍໂລກ

ຄຳວ່າ ໂລກ ໃນຄຳວ່າ ທ່ານຈົ່ງພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ໄດ້ແກ່ ໂລກ ນະຮົກ ໂລກໃນກຳເນີດເດຍຣັດສານ ໂລກໃນເຜດວິໄສ ມະນຸດໂລກ ເທວະໂລກ ຂັນທະໂລກ ທາດໂລກ ອາຍະຕະນະໂລກ ໂລກນີ້ ໂລກໜ້າ ພົມມະໂລກ ພ້ອມທັງເທວະໂລກ

ພິກຂຸອົງໜຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ໂລກ ໂລກ ດ້ວຍເຫດພຽງເທົ່າໃດນໍ ຈຶ່ງຕັດຮຽກວ່າ ໂລກນໍຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ທີ່ເຮົາຮຽກວ່າ ໂລກ ຍ້ອນຈະຕ້ອງແຕກສະຫຼາຍ ກໍອັນໃດນໍ ຈະຕ້ອງແຕກສະຫຼາຍ ຄື ຈັກຂຸຕ້ອງແຕກສະຫຼາຍ ຮູບຕ້ອງແຕກສະຫຼາຍ ຈັກຂຸວິນຍານຕ້ອງແຕກສະຫຼາຍ ຈັກຂຸສຳຜັດຕ້ອງແຕກສະຫຼາຍ ແມ່ນສຸກຂະເວທະນາ ທຸກຂະເວທະນາ ຫຼື ອະທຸກຂະມະສຸຂະເວທະນາ (ເປັນທຸກກໍບໍ່ແມ່ນເປັນສຸກກໍບໍ່ແມ່ນ) ທີ່ເກີດຂຶ້ນຍ້ອນມີຈັກຂຸສຳຜັດເປັນປັດໄຈ ຕ້ອງແຕກສະຫຼາຍ ໂສຕະຕ້ອງແຕກສະຫຼາຍ ສຽງຕ້ອງແຕກສະຫຼາຍ ຄານະຕ້ອງແຕກສະຫຼາຍ ກິ່ນຕ້ອງແຕກສະຫຼາຍ ຊິວຫາຕ້ອງແຕກສະຫຼາຍ ຣົດຕ້ອງແຕກສະຫຼາຍ ກາຍຕ້ອງແຕກສະຫຼາຍ ໂຜດຖັບພະຕ້ອງແຕກສະຫຼາຍ ມະໂນຕ້ອງແຕກສະຫຼາຍ ທຳມາຣົມຕ້ອງແຕກສະຫຼາຍ ມະໂນວິນຍານຕ້ອງແຕກສະຫຼາຍ ມະໂນສຳຜັດຕ້ອງແຕກສະຫຼາຍ ແມ່ນສຸກຂະເວທະນາ ທຸກຂະເວທະນາ ອະທຸກຂະມະສຸຂະເວທະນາທີ່ເກີດຂຶ້ນ ຍ້ອນມະໂນສຳຜັດເປັນປັດໄຈ ກໍຕ້ອງແຕກສະຫຼາຍ ພິກຂຸທີ່ເຮົາຮຽກວ່າ ໂລກ ຍ້ອນຈະຕ້ອງແຕກສະຫຼາຍ ເປັນແນວນີ້

ຄຳວ່າ ທ່ານຈົ່ງພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ອະທິບາຍວ່າ ບຸກຄົນຍ່ອມພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າດ້ວຍເຫດ ໒ ປະການ ຄື

໑. ດ້ວຍການກຳນົດເຫັນສັງຂານບໍ່ເປັນໄປຕາມອຳນາດ
໒. ດ້ວຍການພິຈາລະນາເຫັນສັງຂານເປັນຂອງວ່າງເປົ່າ

ບຸກຄົນພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ດ້ວຍການກຳນົດເຫັນສັງຂານບໍ່ເປັນໄປຕາມອຳນາດ ເປັນແນວໃດ?

ຄື ບຸກຄົນຍ່ອມບໍ່ໄດ້ອຳນາດໃນຮູບ ອຳນາດໃນເວທະນາ ອຳນາດໃນສັນຍາ ອຳນາດໃນສັງຂານ ອຳນາດໃນວິນຍານ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ຮູບເປັນອະນັດຕາ ຖ້າຮູບນີ້ຈັກເປັນອັດຕາແລ້ວ ຮູບນີ້ບໍ່ເພິ່ງເປັນໄປເພື່ອອາພາດ ແລະບຸກຄົນເພິ່ງໄດ້ໃນຮູບວ່າ ຮູບຂອງເຮົາຈົ່ງເປັນແນວນີ້ ຮູບຂອງເຮົາຢ່າໄດ້ເປັນແນວນັ້ນເລີຍ ພິກຂຸທັງຫຼາຍ ກໍຍ້ອນຮູບເປັນອະນັດ

ຕາ ດັ່ງນັ້ນ ຮູບຈຶ່ງເປັນໄປເພື່ອອາພາດ ແລະບຸກຄົນຍ່ອມບໍ່ໄດ້ໃນຮູບວ່າ ຮູບຂອງເຮົາຈົ່ງເປັນແບວນີ້ ຮູບຂອງເຮົາຢ່າໄດ້ເປັນແບວນັ້ນ

ພິກຂຸທັງຫຼາຍ ເວທະນາເປັນອະນັດຕາ ຖ້າເວທະນານີ້ຈັກເປັນອັດຕາແລ້ວ ເວທະນານີ້ບໍ່ເພິ່ງເປັນໄປເພື່ອອາພາດ ແລະບຸກຄົນເພິ່ງໄດ້ໃນເວທະນາວ່າ ເວທະນາຂອງເຮົາຈົ່ງເປັນແບວນີ້ ເວທະນາຂອງເຮົາຢ່າໄດ້ເປັນແບວນັ້ນ ພິກຂຸທັງຫຼາຍ ກໍຍ້ອນເວທະນາເປັນອະນັດຕາ ດັ່ງນັ້ນ ເວທະນາຈຶ່ງເປັນໄປເພື່ອອາພາດ ແລະບຸກຄົນຍ່ອມບໍ່ໄດ້ໃນເວທະນາວ່າ ເວທະນາຂອງເຮົາຈົ່ງເປັນແບວນີ້ ເວທະນາຂອງເຮົາຢ່າໄດ້ເປັນແບວນັ້ນ

ພິກຂຸທັງຫຼາຍ ສັນຍາເປັນອະນັດຕາ ຖ້າສັນຍານີ້ຈັກເປັນອັດຕາແທ້ແລ້ວ ສັນຍານີ້ບໍ່ເພິ່ງເປັນໄປເພື່ອອາພາດ ແລະບຸກຄົນເພິ່ງໄດ້ໃນສັນຍາວ່າ ສັນຍາຂອງເຮົາຈົ່ງເປັນແບວນີ້ ສັນຍາຂອງເຮົາຢ່າໄດ້ເປັນແບວນັ້ນ ພິກຂຸທັງຫຼາຍ ກໍຍ້ອນສັນຍາເປັນອະນັດຕາ ດັ່ງນັ້ນ ສັນຍາຈຶ່ງເປັນໄປເພື່ອອາພາດ ແລະບຸກຄົນຍ່ອມບໍ່ໄດ້ໃນສັນຍາວ່າ ສັນຍາຂອງເຮົາຈົ່ງເປັນແບວນີ້ ສັນຍາຂອງເຮົາຢ່າໄດ້ເປັນແບວນັ້ນ

ພິກຂຸທັງຫຼາຍ ສັງຂານທັງຫຼາຍເປັນອະນັດຕາ ຖ້າສັງຂານນີ້ຈັກເປັນອັດຕາແລ້ວສັງຂານນີ້ ບໍ່ເພິ່ງເປັນໄປເພື່ອອາພາດ ແລະບຸກຄົນເພິ່ງໄດ້ໃນສັງຂານວ່າ ສັງຂານຂອງເຮົາຈົ່ງເປັນແບວນີ້ ສັງຂານຂອງເຮົາຢ່າໄດ້ເປັນແບວນັ້ນ ພິກຂຸທັງຫຼາຍ ກໍຍ້ອນສັງຂານເປັນອະນັດຕາ ດັ່ງນັ້ນ ສັງຂານຈຶ່ງເປັນໄປເພື່ອອາພາດ ແລະບຸກຄົນຍ່ອມບໍ່ໄດ້ໃນສັງຂານວ່າ ສັງຂານຂອງເຮົາຈົ່ງເປັນແບວນີ້ ສັງຂານຂອງເຮົາຢ່າໄດ້ເປັນແບວນັ້ນ

ພິກຂຸທັງຫຼາຍ ວິນຍານເປັນອະນັດຕາ ຖ້າວິນຍານນີ້ຈັກເປັນອັດຕາແລ້ວ ວິນຍານນີ້ກໍບໍ່ເພິ່ງເປັນໄປເພື່ອອາພາດ ແລະບຸກຄົນເພິ່ງໄດ້ໃນວິນຍານວ່າ ວິນຍານຂອງເຮົາຈົ່ງເປັນແບວນີ້ ວິນຍານຂອງເຮົາຢ່າໄດ້ເປັນແບວນັ້ນ ພິກຂຸທັງຫຼາຍ ກໍຍ້ອນວິນຍານເປັນອະນັດຕາ ດັ່ງນັ້ນ ວິນຍານຈຶ່ງເປັນໄປເພື່ອອາພາດ ແລະບຸກຄົນຍ່ອມບໍ່ໄດ້ໃນວິນຍານວ່າ ວິນຍານຂອງເຮົາຈົ່ງເປັນແບວນີ້ ວິນຍານຂອງເຮົາຢ່າໄດ້ເປັນແບວນັ້ນ

## ວ່າດ້ວຍປະຕິດຈະສະມຸບບາດ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ກາຍນີ້ບໍ່ແມ່ນຂອງພວກທ່ານ ທັງບໍ່ແມ່ນຂອງຄົນອື່ນ ກາຍນີ້ກໍາເກົ່າຄວບຄຸມໄວ້ ຈິດປະມວນໄວ້ ເພິ່ງເຫັນວ່າ ເປັນບ່ອນຕັ້ງແຫ່ງເວທະນາ ອະຣິຍະສາວົກຜູ້ໄດ້ສະດັບແລ້ວ ຍ່ອມມະນະສິການປະຕິດຈະສະມຸບບາດຢ່າງດີໂດຍແຍບຄາຍ

ໃນກາຍນັ້ນ ວ່າ

ຍ້ອນເຫດນີ້ ເມື່ອສິ່ງນີ້ມີ　ສິ່ງນີ້ຈຶ່ງມີ<br>
ຍ້ອນສິ່ງນີ້ເກີດຂຶ້ນ　ສິ່ງນີ້ຈຶ່ງເກີດຂຶ້ນ

| | | |
|---|---|---|
| ຍ້ອນສິ່ງນີ້ບໍ່ມີ | ສິ່ງນີ້ຈຶ່ງບໍ່ມີ | |
| ຍ້ອນສິ່ງນີ້ດັບໄປ | ສິ່ງນີ້ຈຶ່ງດັບໄປ ຄື | |
| ຍ້ອນອະວິດຊາ | ເປັນປັດໄຈ | ສັງຂານຈຶ່ງມີ |
| ຍ້ອນສັງຂານ | ເປັນປັດໄຈ | ວິນຍານຈຶ່ງມີ |
| ຍ້ອນວິນຍານ | ເປັນປັດໄຈ | ນາມຣູບຈຶ່ງມີ |
| ຍ້ອນນາມຣູບ | ເປັນປັດໄຈ | ສາລະຍະຕະນະຈຶ່ງມີ |
| ຍ້ອນສາລະຍະຕະນະ | ເປັນປັດໄຈ | ຜັດສະຈຶ່ງມີ |
| ຍ້ອນຜັດສະ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນເວທະນາ | ເປັນປັດໄຈ | ຕັນຫາຈຶ່ງມີ |
| ຍ້ອນຕັນຫາ | ເປັນປັດໄຈ | ອຸປາທານຈຶ່ງມີ |
| ຍ້ອນອຸປາທານ | ເປັນປັດໄຈ | ພົບຈຶ່ງມີ |
| ຍ້ອນພົບ | ເປັນປັດໄຈ | ຊາດຈຶ່ງມີ |
| ຍ້ອນຊາດ | ເປັນປັດໄຈ | ຊະຣາມໍຣະນະຈຶ່ງມີ |

ຄວາມເສົ້າໂສກ ຄວາມຄ່ຳຄວນ ຄວາມທຸກກາຍ ຄວາມທຸກໃຈ ແລະຄວາມຄັບແຄ້ນໃຈ ກໍມີພ້ອມ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການແນວນີ້

ຍ້ອນອະວິດຊາສຳຣອກອອກດັບໄປບໍ່ເຫຼືອ ສັງຂານຈຶ່ງດັບ

| | |
|---|---|
| ຍ້ອນສັງຂານດັບ | ວິນຍານຈຶ່ງດັບ |
| ຍ້ອນວິນຍານດັບ | ນາມຣູບຈຶ່ງດັບ |
| ຍ້ອນນາມຣູບດັບ | ສາລະຍະຕະນະຈຶ່ງດັບ |
| ຍ້ອນສາລະຍະຕະນະດັບ | ຜັດສະຈຶ່ງດັບ |
| ຍ້ອນຜັດສະດັບ | ເວທະນາຈຶ່ງດັບ |
| ຍ້ອນເວທະນາດັບ | ຕັນຫາຈຶ່ງດັບ |
| ຍ້ອນຕັນຫາດັບ | ອຸປາທານຈຶ່ງດັບ |
| ຍ້ອນອຸປາທານດັບ | ພົບຈຶ່ງດັບ |
| ຍ້ອນພົບດັບ | ຊາດຈຶ່ງດັບ |
| ຍ້ອນຊາດດັບ | ຊະຣາມໍຣະນະຈຶ່ງດັບ |

ຄວາມເສົ້າໂສກ ຄວາມຄ່ຳຄວນ ຄວາມທຸກກາຍ ຄວາມທຸກໃຈ ແລະຄວາມຄັບແຄ້ນໃຈ ກໍດັບໄປ ຄວາມດັບແຫ່ງກອງທຸກທັງມວນນີ້ມີໄດ້ດ້ວຍປະການແນວນີ້"

ບຸກຄົນພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ດ້ວຍການກຳນົດເຫັນສັງຂານບໍ່ເປັນໄປຕາມອຳນາດ ເປັນແນວນີ້

ບຸກຄົນພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ດ້ວຍການພິຈາລະນາເຫັນສັງຂານເປັນຂອງວ່າງເປົ່າ ເປັນແນວໃດ?

ຄື ບຸກຄົນຍ່ອມບໍ່ໄດ້ແກ່ນສານໃນຮູບ ແກ່ນສານໃນເວທະນາ ແກ່ນສານໃນສັນຍາ ແກ່ນສານໃນສັງຂານ ແກ່ນສານໃນວິນຍານ

ຮູບບໍ່ມີແກ່ນສານ ຂາດແກ່ນສານ ປາສະຈາກແກ່ນສານ ໂດຍສາຣະແຫ່ງແກ່ນສານທີ່ເປັນຂອງທ່ຽງ ໂດຍສາຣະແຫ່ງແກ່ນສານທີ່ເປັນສຸກ ໂດຍສາຣະແຫ່ງແກ່ນສານທີ່ເປັນຕົວຕົນ ໂດຍຄວາມເປັນຂອງທ່ຽງ ໂດຍຄວາມເປັນຂອງຍັ່ງຍືນ ໂດຍຄວາມເປັນຂອງໝັ້ນຄົງ ຫຼືໂດຍຄວາມເປັນຂອງບໍ່ຜັນປ່ຽນໄປເປັນທຳມະດາ

ເວທະນາບໍ່ມີແກ່ນສານ ຂາດແກ່ນສານ ປາສະຈາກແກ່ນສານ ຯລຯ
ສັນຍາບໍ່ມີແກ່ນສານ ຂາດແກ່ນສານ ປາສະຈາກແກ່ນສານ ຯລຯ
ສັງຂານບໍ່ມີແກ່ນສານ ຂາດແກ່ນສານ ປາສະຈາກແກ່ນສານ ຯລຯ
ວິນຍານບໍ່ມີແກ່ນສານ ຂາດແກ່ນສານ ປາສະຈາກແກ່ນສານ ຯລຯ ໂດຍສາຣະແຫ່ງແກ່ນສານທີ່ເປັນຂອງທ່ຽງ ໂດຍສາຣະແຫ່ງແກ່ນສານທີ່ເປັນສຸກ ໂດຍສາຣະແຫ່ງແກ່ນສານທີ່ເປັນຕົວຕົນ ໂດຍຄວາມເປັນຂອງທ່ຽງ ໂດຍຄວາມເປັນຂອງຍັ່ງຍືນ ໂດຍຄວາມເປັນຂອງໝັ້ນຄົງ ຫຼື ໂດຍຄວາມເປັນຂອງບໍ່ຜັນປ່ຽນໄປເປັນທຳມະດາ

ໄມ້ອໍ້ບໍ່ມີແກ່ນ ຂາດແກ່ນ ປາສະຈາກແກ່ນ ໄມ້ທຸ່ງສາ ບໍ່ມີແກ່ນ ຂາດແກ່ນ ປາສະຈາກແກ່ນ ໄມ້ໝາກເດື່ອ ບໍ່ມີແກ່ນ ຂາດແກ່ນ ປາສະຈາກແກ່ນ ໄມ້ທອງຫຼາງ ບໍ່ມີແກ່ນ ຂາດແກ່ນ ປາສະຈາກແກ່ນ ຕົ້ນທາງອນໄກ່ (ປາລິພັດທະໂກ) ບໍ່ມີແກ່ນ ຂາດແກ່ນ ປາສະຈາກແກ່ນ ຟອງນໍ້າ ບໍ່ມີແກ່ນສານ ຂາດແກ່ນສານ ປາສະຈາກແກ່ນສານ ຕ່ອມນໍ້າ ບໍ່ມີແກ່ນສານ ຂາດແກ່ນສານ ປາສະຈາກແກ່ນສານ ພະຍັບແດດ ບໍ່ມີແກ່ນສານ ຂາດແກ່ນສານ ປາສະຈາກແກ່ນສານ ຕົ້ນກ້ວຍ ບໍ່ມີແກ່ນສານ ຂາດແກ່ນສານ ປາສະຈາກແກ່ນສານ ເງົາ ບໍ່ມີແກ່ນສານ ຂາດແກ່ນສານ ປາສະຈາກແກ່ນສານ ສັນໃດ

ຮູບບໍ່ມີແກ່ນສານ ຂາດແກ່ນສານ ປາສະຈາກແກ່ນສານ ໂດຍສາຣະແຫ່ງແກ່ນສານທີ່ເປັນຂອງທ່ຽງ ໂດຍສາຣະແຫ່ງແກ່ນສານທີ່ເປັນສຸກ ໂດຍສາຣະແຫ່ງແກ່ນສານທີ່ເປັນຕົວຕົນ ໂດຍຄວາມເປັນຂອງທ່ຽງ ໂດຍຄວາມເປັນຂອງຍັ່ງຍືນ ໂດຍຄວາມເປັນຂອງໝັ້ນຄົງ ໂດຍຄວາມເປັນຂອງບໍ່ຜັນປ່ຽນໄປເປັນທຳມະດາ ເວທະນາບໍ່ມີແກ່ນສານ ຂາດແກ່ນສານ ປາສະຈາກແກ່ນສານ ຯລຯ ສັນຍາບໍ່ມີແກ່ນສານ ຂາດແກ່ນສານ ປາສະຈາກແກ່ສານ ຯລຯ ສັງຂານ ບໍ່ມີແກ່ນສານ ຂາດແກ່ນສານ ປາສະຈາກແກ່ນສານ ຯລຯ ວິນຍານບໍ່ມີແກ່ນສານຂາດແກ່ນສານ ໂດຍສາຣະແຫ່ງແກ່ນສານທີ່ເປັນຂອງທ່ຽງ ໂດຍສາຣະແຫ່ງແກ່ນສານທີ່ເປັນສຸກ ໂດຍສາຣະ

ແຫ່ງແກ່ນສານທີ່ເປັນຕົວຕົນ ໂດຍຄວາມເປັນຂອງຫ່ຽງ ໂດຍຄວາມເປັນຂອງຍັ່ງຍືນ ໂດຍຄວາມເປັນຂອງໝັ້ນຄົງ ໂດຍຄວາມເປັນຂອງບໍ່ຜັນປ່ຽນໄປເປັນທຳມະດາ ສັນນັ້ນ

ບຸກຄົນພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ດ້ວຍການພິຈາລະນາເຫັນສັງຂານເປັນຂອງວ່າງເປົ່າແນວນີ້ ບຸກຄົນພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ດ້ວຍເຫດ ໒ ຢ່າງເຫຼົ່ານີ້

ອີກໄນໜຶ່ງ ບຸກຄົນພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ດ້ວຍອາການ ໖ ຢ່າງ ຄືພິຈາລະນາເຫັນຮູບ

໑. ໂດຍຄວາມທີ່ຕົນບໍ່ໄດ້ເປັນໃຫຍ່
໒. ໂດຍຄວາມທີ່ຕົນຈັດການຕາມພໍໃຈບໍ່ໄດ້
໓. ໂດຍບໍ່ເປັນບ່ອນຕັ້ງແຫ່ງຄວາມສະບາຍ
໔. ໂດຍບໍ່ເປັນໄປໃນອຳນາດ
໕. ໂດຍເປັນໄປຕາມເຫດ
໖. ໂດຍຄວາມວ່າງເປົ່າ

ພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ພິຈາລະນາເຫັນວິນຍານ

໑. ໂດຍຄວາມທີ່ຕົນບໍ່ໄດ້ເປັນໃຫຍ່
໒. ໂດຍຄວາມທີ່ຕົນຈັດການຕາມພໍໃຈບໍ່ໄດ້
໓. ໂດຍບໍ່ເປັນບ່ອນຕັ້ງແຫ່ງຄວາມສະບາຍ
໔. ໂດຍບໍ່ເປັນໄປໃນອຳນາດ
໕. ໂດຍເປັນໄປຕາມເຫດ
໖. ໂດຍຄວາມວ່າງເປົ່າ

ບຸກຄົນພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ດ້ວຍອາການ ໖ ຢ່າງ ເປັນແນວນີ້

ອີກໄນໜຶ່ງ ບຸກຄົນພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ດ້ວຍອາການ ໑໐ ຢ່າງ ຄືພິຈາລະນາເຫັນຮູບ

໑. ໂດຍຄວາມເປັນຂອງ ວ່າງ
໒. ໂດຍຄວາມເປັນຂອງ ເປົ່າ
໓. ໂດຍຄວາມເປັນຂອງ ສູນ
໔. ໂດຍຄວາມເປັນອະນັດຕາ
໕. ໂດຍຄວາມບໍ່ມີແກ່ນສານ
໖. ໂດຍຄວາມເປັນເໝືອນເພດຊະຄາດ

໗. ໂດຍຄວາມເປັນຂອງປາສະຈາກຄວາມຈະເລີນ

໘. ໂດຍຄວາມເປັນເຫດແຫ່ງຄວາມລຳບາກ

໙. ໂດຍຄວາມເປັນຂອງມີອາສະວະ

໑໐. ໂດຍຄວາມເປັນຂອງທີ່ຖືກເຫດປັດໄຈປຸງແຕ່ງ

ພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ ຈຸຕິ (ຄວາມເຄື່ອນຈາກພົບ) ຯລຯ ອຸປະບັດ (ການຖືກຳເນີດ)ຯລຯ ປະຕິສົນທິ ຯລຯ ພົບ ຯລຯ ສັງສາຣະວັດ

໑. ໂດຍຄວາມເປັນຂອງວ່າງ

໒. ໂດຍຄວາມເປັນຂອງເປົ່າ

໓. ໂດຍຄວາມເປັນຂອງສູນ

໔. ໂດຍຄວາມເປັນອະນັດຕາ

໕. ໂດຍຄວາມບໍ່ມີແກ່ນສານ

໖. ໂດຍຄວາມເປັນເໝືອນເພດຊະຄາດ

໗. ໂດຍຄວາມເປັນຂອງປາສະຈາກຄວາມຈະເລີນ

໘. ໂດຍຄວາມເປັນເຫດແຫ່ງຄວາມລຳບາກ

໙. ໂດຍຄວາມເປັນຂອງມີອາສະວະ

໑໐. ໂດຍຄວາມເປັນຂອງທີ່ຖືກເຫດປັດໄຈປຸງແຕ່ງ

ບຸກຄົນພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ດ້ວຍອາການ ໑໐ ຢ່າງ ເປັນແນວນີ້

ອີກໄນໜຶ່ງ ບຸກຄົນພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ດ້ວຍອາການ ໑໒ ຢ່າງ ຄື ພິຈາລະນາເຫັນຮູບ

໑. ບໍ່ແມ່ນສັດ
໒. ບໍ່ແມ່ນຊີວະ
໓. ບໍ່ແມ່ນນະຣະ
໔. ບໍ່ແມ່ນມານົບ
໕. ບໍ່ແມ່ນຍິງ
໖. ບໍ່ແມ່ນຊາຍ
໗. ບໍ່ແມ່ນອັດຕາ
໘. ບໍ່ແມ່ນຂອງເນື່ອງດ້ວຍອັດຕາ
໙. ບໍ່ແມ່ນເຮົາ
໑໐. ບໍ່ແມ່ນຂອງເຮົາ
໑໑. ບໍ່ແມ່ນຜູ້ໃດ
໑໒. ບໍ່ແມ່ນຂອງຜູ້ໃດ

ພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ

໑. ບໍ່ແມ່ນສັດ
໒. ບໍ່ແມ່ນຊີວະ

໓. ບໍ່ແມ່ນນຣະ ໔. ບໍ່ແມ່ນມານົບ
໕. ບໍ່ແມ່ນຍິງ ໖. ບໍ່ແມ່ນຊາຍ
໗. ບໍ່ແມ່ນອັດຕາ ໙. ບໍ່ແມ່ນຂອງເນື່ອງດ້ວຍອັດຕາ
໙. ບໍ່ແມ່ນເຮົາ ໑໐. ບໍ່ແມ່ນຂອງເຮົາ
໑໑. ບໍ່ແມ່ນຜູ້ໃດ ໑໒. ບໍ່ແມ່ນຂອງຜູ້ໃດ

ບຸກຄົນພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ດ້ວຍອາການ ໑໒ ຢ່າງ ເປັນແນວນີ້

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ສິ່ງໃດບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍ ຈົ່ງລະສິ່ງນັ້ນ ສິ່ງທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນແລ ຈັກມີເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກຕະຫຼອດການລະນານ

ພິກຂຸທັງຫຼາຍ ອັນໃດນໍ ທີ່ບໍ່ແມ່ນຂອງທ່ານທັງຫຼາຍ ຮູບບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຮູບນັ້ນ ຮູບທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນແລ ຈັກມີເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກຕະຫຼອດການລະນານ

ເວທະນາບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະເວທະນານັ້ນ ເວທະນາທີ່ທ່ານທັງຫຼາຍ ລະໄດ້ແລ້ວນັ້ນ ຈັກມີເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກຕະຫຼອດການລະນານ

ສັນຍາບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະສັນຍານັ້ນ ສັນຍາທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກມີເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກຕະຫຼອດການລະນານ

ສັງຂານທັງຫຼາຍບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະສັງຂານເຫຼົ່ານັ້ນ ສັງຂານ ທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກມີເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກຕະຫຼອດການລະນານ

ວິນຍານບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະວິນຍານນັ້ນ ວິນຍານທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກມີເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກຕະຫຼອດການລະນານ

ພິກຂຸທັງຫຼາຍ ຄົນເພິ່ງເອົາຫຍ້າ ໄມ້ ງ່າໄມ້ ໃບໄມ້ທີ່ມີຢູ່ໃນເຊຕະວັນວິຫານນີ້ໄປເຜົາ ຫຼື ເອົາໄປທຳລາຍ ທ່ານທັງຫຼາຍຈະເພິ່ງມີຄວາມຄິດແນວນີ້ແດ່ບໍ ວ່າ ຄົນຜູ້ນັ້ນ ເອົາພວກເຮົາໄປເຜົາ ຫຼື ທຳລາຍເຮົາ

ຄວາມຄິດເຊັ່ນນັ້ນ ຍ່ອມບໍ່ມີ ຂ້ານ້ອຍ
ຂໍ້ນັ້ນ ເປັນຍ້ອນເຫດໃດ
ຍ້ອນນັ້ນ ບໍ່ແມ່ນອັດຕາ ຫຼື ຂອງເນື່ອງດ້ວຍອັດຕາ
ຂອງພວກຂ້າພຣະອົງທັງຫຼາຍ ຂ້ານ້ອຍ

ແນວດຽວກັນນັ້ນແລ ພິກຂຸທັງຫຼາຍ ສິ່ງໃດບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະສິ່ງນັ້ນ ສິ່ງທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກມີເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກຕະຫຼອດການລະນານຂອງພວກທ່ານ

ພິກຂຸທັງຫຼາຍ ອັນໃດນໍ ບໍ່ແມ່ນຂອງທ່ານທັງຫຼາຍ ຮູບບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຮູບນັ້ນສາ ຮູບທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກມີເພື່ອປະໂຫຍດເກື້ອ ກູນ ເພື່ອຄວາມສຸກຕະຫຼອດການລະນານ

ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານບໍ່ແມ່ນຂອງທ່ານທັງຫຼາຍ

ທ່ານທັງຫຼາຍ ຈົ່ງລະວິນຍານນັ້ນ ວິນຍານທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກມີເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກຕະຫຼອດການລະນານ[໑] ລວມຄວາມວ່າ ບຸກຄົນພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າເປັນແນວນີ້ແດ່

## ວ່າດ້ວຍໂລກວ່າງ

ທ່ານພຣະອານົນໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ໂລກວ່າງ ໂລກວ່າງ ດ້ວຍເຫດພຽງເທົ່າໃດນໍ ຈຶ່ງຕັດວ່າ ໂລກວ່າງ

ອານົນ ຍ້ອນໂລກວ່າງຈາກອັດຕາ ຫຼື ຈາກສິ່ງທີ່ເນື່ອງດ້ວຍອັດຕາ ດັ່ງນັ້ນ ເຮົາຈຶ່ງກ່າວວ່າ ໂລກວ່າງ ອານົນ ອັນໃດນໍ ທີ່ວ່າງຈາກອັດຕາ ຫຼື ຈາກສິ່ງທີ່ເນື່ອງດ້ວຍອັດຕາ ອານົນ ຈັກຂຸແລ ວ່າງຈາກອັດຕາ ຫຼື ຈາກສິ່ງທີ່ເນື່ອງດ້ວຍອັດຕາ ຮູບວ່າງ ฯລฯ ຈັກຂຸວິນຍານວ່າງ ฯລฯ ຈັກຂຸສຳຜັດວ່າງ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກເວທະນາ ເປັນທຸກຂະເວທະນາ ຫຼື ອະທຸກຂະມະສຸຂະເວທະນາ (ເປັນທຸກກໍບໍ່ແມ່ນເປັນສຸກກໍບໍ່ແມ່ນ) ທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ກໍວ່າງຈາກອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາ ໂສຕະວ່າງ ฯລฯ ສຽງວ່າງ ฯລฯ ຄານະວ່າງ ฯລฯ ກິ່ນວ່າງ ฯລฯ ຊິວຫາວ່າງ ฯລฯ ຣົດວ່າງ ฯລฯ ກາຍວ່າງ ฯລฯ ໂຜດຖັບພະວ່າງ ฯລฯ ໃຈວ່າງ ฯລฯ ທຳມາຣົມວ່າງ ฯລฯ ມະໂນວິນຍານວ່າງ ฯລฯ ມະໂນສຳຜັດກໍວ່າງ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸຂະເວທະນາ ເປັນທຸກຂະເວທະນາ ຫຼື ອະທຸກຂະມະສຸຂະເວທະນາທີ່ເກີດຂຶ້ນ ຍ້ອນມະໂນສຳຜັດເປັນປັດໄຈ ກໍວ່າງຈາກອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາ ອານົນ ຍ້ອນໂລກວ່າງຈາກອັດຕາ ຫຼື ຈາກສິ່ງທີ່ເນື່ອງດ້ວຍອັດຕາ ດັ່ງນັ້ນ ເຮົາຈຶ່ງກ່າວວ່າ ໂລກວ່າງ ບຸກຄົນພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ເປັນແນວນີ້ແດ່

ຄາມະນີ ໄພຍ່ອມບໍ່ມີແກ່ບຸກຄົນຜູ້ພິຈາລະນາເຫັນ
ຄວາມເກີດຂຶ້ນແຫ່ງທຳລ້ວນ ໆ
ແລະຄວາມສືບເນື່ອງແຫ່ງສັງຂານລ້ວນ ໆ ຕາມທີ່ເປັນຈິງ
ເມື່ອໃດ ບຸກຄົນພິຈາລະນາເຫັນໂລກວ່າ
ສະເໝີດ້ວຍຫຍ້າແລະຂອນໄມ້ ດ້ວຍປັນຍາ
ເມື່ອນັ້ນ ເຂົາຍ່ອມບໍ່ປາຖະໜາອັນໃດອື່ນ
ນອກຈາກຄວາມບໍ່ປະຕິສົນທິ

ບຸກຄົນພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ເປັນແບວນີ້ແດ່

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ແນວນັ້ນແລ ພິກຂຸຄົ້ນຫາ ຮູບ ຕະຫຼອດຄະຕິແຫ່ງຮູບທີ່ມີຢູ່ ຄົ້ນຫາເວທະນາ ຕະຫຼອດຄະຕິແຫ່ງເວທະນາທີ່ມີຢູ່ ຄົ້ນຫາ ສັນຍາ ຕະຫຼອດຄະຕິແຫ່ງສັນຍາທີ່ມີຢູ່ ຄົ້ນຫາສັງຂານ ຕະຫຼອດຄະຕິແຫ່ງສັງຂານທີ່ມີຢູ່ ຄົ້ນຫາ ວິນຍານ ຕະຫຼອດຄະຕິແຫ່ງວິນຍານທີ່ມີຢູ່ ເມື່ອພິກຂຸນັ້ນຄົ້ນຫາຮູບ ຕະຫຼອດຄະຕິແຫ່ງຮູບທີ່ມີຢູ່ ຄົ້ນຫາເວທະນາ ຕະຫຼອດຄະຕິແຫ່ງເວທະນາທີ່ມີຢູ່ ຄົ້ນຫາສັນຍາ ຕະຫຼອດຄະຕິແຫ່ງສັນຍາທີ່ມີ ຢູ່ ຄົ້ນຫາສັງຂານ ຕະຫຼອດຄະຕິແຫ່ງສັງຂານທີ່ມີຢູ່ ຄົ້ນຫາວິນຍານ ຕະຫຼອດຄະຕິແຫ່ງວິນຍານ ທີ່ມີຢູ່ ຄວາມຖືວ່າເຮົາຂອງເຮົາ ຫຼື ມີເຮົາ ຂອງພິກຂຸນັ້ນບໍ່ມີ ບຸກຄົນພິຈາລະນາເຫັນໂລກໂດຍ ຄວາມວ່າງເປົ່າ ເປັນແບວນີ້ແດ່

ຄຳວ່າ ທ່ານຈົ່ງພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ ອະທິບາຍວ່າ ທ່ານຈົ່ງ ພິຈາລະນາ ເຫັນ ຄື ປະຈັກແຈ້ງ ແນມເຫັນ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ ຊັດແຈ້ງໂລກໂດຍຄວາມວ່າງ ລວມຄວາມວ່າ ທ່ານຈົ່ງພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ

ຄຳວ່າ ໂມຄະຣາດ ໃນຄຳວ່າ ໂມຄະຣາດ ຯລຯ ມີສະຕິທຸກເມື່ອ ເປັນຄຳທີ່ພຣະຜູ້ ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ທຸກເມື່ອ ອະທິບາຍວ່າ ຕະຫຼອດການທັງປວງ ຯລຯ ປັດສົມໄວ

ຄຳວ່າ ມີສະຕິ ອະທິບາຍວ່າ ມີສະຕິດ້ວຍເຫດ ໔ ຢ່າງ ຄື (໑) ຊື່ວ່າມີສະຕິ ເມື່ອ ຈະເລີນສະຕິປັດຖານພິຈາລະນາກາຍໃນກາຍ ຯລຯ ຜູ້ນັ້ນ ພຣະຜູ້ມີພຣະພາກເຈົ້າ ຕັດຮຽກວ່າ ມີສະຕິ ລວມຄວາມວ່າ ໂມຄະຣາດ ຯລຯ ມີສະຕິທຸກເມື່ອ

ຄຳວ່າ ເພິ່ງຖອນອັດຕານຸທິດຖິສາ ອະທິບາຍວ່າ ສັກກາຍະທິດຖິ ໒໐ ຕັດຮຽກວ່າ ອັດ ຕານຸທິດຖິ

ປຸຖຸຊົນຜູ້ບໍ່ໄດ້ສະດັບໃນໂລກນີ້ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິ ຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງ ສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ຍ່ອມເບິ່ງເຫັນຮູບ ໂດຍຄວາມເປັນ ອັດຕາ ເຫັນອັດຕາວ່າມີຮູບ ເຫັນຮູບໃນອັດຕາ ຫຼື ເຫັນອັດຕາໃນຮູບ

ຍ່ອມເບິ່ງເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ໂດຍຄວາມ ເປັນອັດຕາ ເຫັນອັດຕາວ່າມີວິນຍານ ເຫັນວິນຍານໃນອັດຕາ ຫຼືເຫັນອັດຕາໃນວິນຍານ ທິດຖິ ການຕົກຢູ່ໃນທິດຖິ ຄວາມຮົກທຶບຄືທິດຖິ ຄວາມກັນດານຄືທິດຖິ ສັ່ງນໜາມຄືທິດຖິ ຄວາມດີ້ນ ຮົນຄືທິດຖິ ເຄື່ອງຜູກພັນຄືທິດຖິ ຄວາມຖື ຄວາມຖືໝັ້ນ ຄວາມຍຶດໝັ້ນ ຄວາມຍຶດໝັ້ນຖືໝັ້ນ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິເດຍຣະຖີ ຄວາມຖືຂັດແຍ່ງ ຄວາມຖືວິປະຣິດ ຄວາມຖືວິ ປະລາດ ຄວາມຖືຜິດ ຄວາມຖືໃນສິ່ງບໍ່ເປັນຄວາມຈິງວ່າເປັນຈິງເຫັນປານນີ້ ຈົນເຖິງທິດຖິ ໖໒ ນີ້ຊື່ວ່າອັດຕານຸທິດຖິ

ຄຳວ່າ ເພິ່ງຖອນອັດຕານຸທິດຖິສາ ອະທິບາຍວ່າ ເພິ່ງຖອນ ຄື ເພິ່ງຖອນຂຶ້ນ ດຶງຂຶ້ນ ລາກຂຶ້ນ ເພີກຂຶ້ນ ໄດ້ແກ່ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ບໍ່ມີອີກ ລວມຄວາມວ່າ ເພິ່ງຖອນອັດຕານຸທິດຖິສາ

ຄຳວ່າ ເປັນຜູ້ຂ້າມມັດຈຸຣາດສາໄດ້ ດ້ວຍອາການແບບນີ້ ອະທິບາຍວ່າ ເພິ່ງຂ້າມ ມັດຈຸຣາດ ຄື ເພິ່ງຂ້າມ ຂ້າມໄປ ຂ້າມພົ້ນ ກ້າວລ່ວງ ລ່ວງເລີຍເຊິ່ງຊະຣາແດ່ ມໍຣະນະແດ່ ດ້ວຍອາການແບບນີ້ ລວມຄວາມວ່າ ເປັນຜູ້ຂ້າມມັດຈຸຣາດສາໄດ້ ດ້ວຍອາການແບບນີ້

ຄຳວ່າ ບຸກຄົນພິຈາລະນາເຫັນໂລກຢູ່ແບບນີ້ ອະທິບາຍວ່າ ພິຈາລະນາເຫັນ ຄື ປະຈັກແຈ້ງ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງໂລກແບບນີ້ ລວມຄວາມວ່າ ບຸກຄົນພິຈາລະນາເຫັນໂລກຢູ່ແບບນີ້

ຄຳວ່າ ມັດຈຸຣາດຈຶ່ງບໍ່ເຫັນ ອະທິບາຍວ່າ ມັດຈຸຊື່ວ່າ ພະຍາມັດຈຸຣາດ ມານຊື່ວ່າພະຍາມັດຈຸຣາດ ຄວາມຕາຍຊື່ວ່າພະຍາມັດຈຸຣາດ

ຄຳວ່າ ຈຶ່ງບໍ່ເຫັນ ໄດ້ແກ່ ບໍ່ເຫັນ ບໍ່ແນມເຫັນ ບໍ່ປະສົບ ບໍ່ພົບ ບໍ່ໄດ້ພົບພໍ້

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ປຽບເໝືອນເນື້ອປ່າ ເມື່ອທ່ຽວໄປຕາມປ່ານ້ອຍປ່າໃຫຍ່ ຍ່ອມວາງໃຈ ຍ່າງ ຢືນ ໝອບ ນອນ ຂໍ້ນັ້ນຍ້ອນເຫດອັນໃດ ຍ້ອນບໍ່ໄດ້ພົບກັບນາຍພານເນື້ອ ສັນໃດ ພິກຂຸກໍສັນນັ້ນ ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານ ທີ່ມີວິຕົກວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ ເຮົາຮຽກພິກຂຸນີ້ວ່າ ຜູ້ເຮັດໃຫ້ມານຕາບອດ ຄື ເປັນຜູ້ທີ່ມານໃຈບາບແນມບໍ່ເຫັນ ຍ້ອນທຳລາຍຈັກຂຸຂອງມານຢ່າງບໍ່ມີຮ່ອງຮອຍ

ອີກໄນໜຶ່ງ ຍ້ອນວິຕົກ ແລະວິຈານສະງົບໄປ ພິກຂຸບັນລຸທຸຕິຍະຊານ ມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະສຸກທີ່ເກີດຈາກສະມາທິຢູ່ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ພິກຂຸທັງຫຼາຍ ເຮົາຮຽກພິກຂຸນີ້ວ່າ ຜູ້ເຮັດໃຫ້ມານຕາບອດ ຄື ເປັນຜູ້ທີ່ມານໃຈບາບແນມບໍ່ເຫັນ ຍ້ອນທຳລາຍຈັກຂຸຂອງມານຢ່າງບໍ່ມີຮ່ອງຮອຍ

ພິກຂຸທັງຫຼາຍ ຍ້ອນລ່ວງຣູບສັນຍາ ດັບປະຕິຄະສັນຍາ ຍ້ອນບໍ່ມະນະສິການນານັດຕະສັນຍາໂດຍປະການທັງປວງ ພິກຂຸບັນລຸອາກາສານັນຈາຍະຕະນະຊານຢູ່ ດ້ວຍມະນະສິການວ່າ ອາກາດບໍ່ມີບ່ອນສຸດ ເຮົາຮຽກພິກຂຸນີ້ວ່າ ຜູ້ເຮັດໃຫ້ມານຕາບອດ ຄື ເປັນຜູ້ທີ່ມານໃຈບາບແນມບໍ່ເຫັນ ຍ້ອນທຳລາຍຈັກຂຸຂອງມານຢ່າງບໍ່ມີຮ່ອງຮອຍ

ອີກໄນໜຶ່ງ ຍ້ອນລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸວິນຍານັນຈາຍະຕະນະຊານຢູ່ ດ້ວຍມະນະສິການວ່າ ວິນຍານບໍ່ມີບ່ອນສຸດ ຯລຯ

ອີກໄນໜຶ່ງ ຍ້ອນລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸອາກິນຈັນຍາຍະຕະນະຊານຢູ່ ດ້ວຍມະນະສິການວ່າ ບໍ່ມີອັນໃດເລີຍ ຯລຯ

ອີກໄນໜຶ່ງ ຍ້ອນລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ຯລຯ

ພິກຂຸທັງຫຼາຍ ຍ້ອນລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸສັນຍາເວທະຍິຕະນິໂຣດຢູ່ ຯລຯ ຍ້ອນເຫັນດ້ວຍປັນຍາ ອາສະວະທັງຫຼາຍຂອງທ່ານຍ່ອມສິ້ນໄປ ພິກຂຸທັງຫຼາຍ ເຮົາຮຽກພິກຂຸນີ້ວ່າ ຜູ້ເຮັດໃຫ້ມານຕາບອດ

ຄື ເປັນຜູ້ທີ່ມານໃຈບາບແນມບໍ່ເຫັນ ຍ້ອນທຳລາຍຈັກຂຸຂອງມານຢ່າງບໍ່ມີຮ່ອງຮອຍ ເປັນຜູ້ຂ້າມຕັນຫາທີ່ຊື່ວ່າ ວິສັດຕິກາໃນໂລກໄດ້ແລ້ວ ຍ່ອມວາງໃຈຢ່າງ ຢືນ ນັ່ງ ນອນ ຂໍ້ນັ້ນຍ້ອນເຫດອັນໃດ ຍ້ອນບໍ່ໄດ້ພົບມານໃຈບາບ ລວມຄວາມວ່າ ມັດຈຸຣາດຈຶ່ງບໍ່ເຫັນ ດ້ວຍເຫດນັ້ນພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ໂມຄະຣາດ ທ່ານຈົ່ງພິຈາລະນາເຫັນໂລກໂດຍຄວາມວ່າງເປົ່າ
ມີສະຕິທຸກເມື່ອ ເພິ່ງຖອນອັດຕານຸທິດຖິສາ
ເປັນຜູ້ຂ້າມມັດຈຸຣາດສາໄດ້ ດ້ວຍອາການແນວນີ້
ບຸກຄົນພິຈາລະນາເຫັນໂລກຢູ່ແນວນີ້ ມັດຈຸຣາດຈຶ່ງແນມບໍ່ເຫັນ

ພ້ອມກັບການຈົບຄາຖາ ຯລຯ ໂມຄະຣາດມານົບ ຯລຯ ໂດຍປະກາດວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ

**ໂມຄະຣາດມານະວະປັນຫານິດເທດທີ ໑໕ ຈົບ**

# ໑໖. ປິງຄິຍະມານະວະປັນຫານິດເທດ

## ວ່າດ້ວຍປັນຫາຂອງປິງຄິຍະມານົບ

[໗໘] (ທ່ານປິງຄິຍະທູນຖາມ ດັ່ງນີ້)

ຂ້າພຣະອົງຊະຣາພາບແລ້ວ ບໍ່ມີກຳລັງ
ຜິວພັນບໍ່ຜຸດຜ່ອງ ຕາບໍ່ແຈ່ມໃສ ຫູຟັງບໍ່ແຈ້ງ
ຂໍຂ້າພຣະອົງຢ່າໄດ້ເປັນຄົນຫຼົງເສຍຫາຍໃນລະຫວ່າງນີ້ເລີຍ
ຂໍພຣະອົງໂຜດຕັດບອກທຳທີ່ເປັນເຄື່ອງລະຊາດແລະຊະຣາ
ໃນໂລກນີ້ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້ (໑)

ຄຳວ່າ ຂ້າພຣະອົງຊະຣາພາບແລ້ວ ໃນຄຳວ່າ ຂ້າພຣະອົງຊະຣາພາບແລ້ວ ບໍ່ມີກຳລັງ ຜິວພັນບໍ່ຜຸດຜ່ອງ ອະທິບາຍວ່າ ຂ້າພຣະອົງຊະຣາພາບແລ້ວ ຄື ສູງອາຍຸ ເປັນຜູ້ເຖົ້າ ລ່ວງການມາຫຼາຍ ຜ່ານໄວມາຫຼາຍ ມີອາຍຸໄດ້ ໑໒໐ ປີ ນັບແຕ່ເກີດ

ຄຳວ່າ ບໍ່ມີກຳລັງ ໄດ້ແກ່ ອ່ອນກຳລັງ ມີກຳລັງໜ້ອຍ ມີເຫື່ອແຮງໜ້ອຍ

ຄຳວ່າ ຜິວພັນບໍ່ຜຸດຜ່ອງ ໄດ້ແກ່ ຜິວພັນໝົດງາມ ຄື ຜິວພັນປາສະຈາກຄວາມງາມ ຜິວພັນທີ່ເຄີຍງາມໝົດໄປແລ້ວ ຣັດສະໝີແຫ່ງຜິວພັນອັນງົດງາມທີ່ມີແຕ່ກ່ອນຫາຍໄປແລ້ວ ຜາກົດຢູ່ແຕ່ໂທດ ລວມຄວາມວ່າ ຂ້າພຣະອົງຊະຣາພາບແລ້ວ ບໍ່ມີກຳລັງ ຜິວພັນບໍ່ຜຸດຜ່ອງ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານປິງຄິຍະທູນຖາມ ດັ່ງນີ້ ເປັນບົດສົນທິ ຯລຯ

ຄຳວ່າ ທ່ານ ເປັນຄຳກ່າວດ້ວຍຄວາມຮັກ ຯລຯ

ຄຳວ່າ ປິງຄິຍະ ເປັນຊື່ຂອງພາມນັ້ນ ຯລຯ ຊື່ຮຽກສະເພາະ ລວມຄວາມວ່າ ທ່ານປິງຄິຍະທູນຖາມ ດັ່ງນີ້

ຄຳວ່າ ຕາບໍ່ແຈ່ມໃສ ຫູຟັງບໍ່ແຈ້ງ ອະທິບາຍວ່າ ຕາບໍ່ແຈ່ມໃສ ຄື ມືດມົວ ຝ້າຟາງ ບໍ່ສົດໃສ ຂ້າພຣະອົງເບິ່ງເຫັນຮູບບໍ່ແຈ້ງດ້ວຍຕາເຊັ່ນນັ້ນ ລວມຄວາມວ່າ ຕາບໍ່ແຈ່ມໃສແລ້ວ

ຄຳວ່າ ຫູຟັງບໍ່ແຈ້ງ ອະທິບາຍວ່າ ໂສຕະປະສາດບໍ່ແຈ່ມໃສ ຄື ຫູຕຶງ ຫູໜັກ ບໍ່ສົດໃສ ຂ້າພຣະອົງຟັງສຽງບໍ່ແຈ້ງ ດ້ວຍໂສຕະປະສາດເຊັ່ນນັ້ນ ລວມຄວາມວ່າ ຕາບໍ່ແຈ່ມໃສ ຫູຟັງບໍ່ແຈ້ງ

ຄຳວ່າ ຂໍຂ້າພຣະອົງຢ່າຯລຯ ເສຍຫາຍ ໃນຄຳວ່າ ຂໍຂ້າພຣະອົງຢ່າໄດ້ເປັນຄົນຫຼົງເສຍຫາຍໃນລະຫວ່າງນີ້ເລີຍ ອະທິບາຍວ່າ ຂ້າພຣະອົງຢ່າສູນເສຍ ຂ້າພຣະອົງຢ່າເສື່ອມ ຂ້າພຣະອົງຢ່າເສຍຫາຍ

ຄຳວ່າ ເປັນຄົນຫຼົງ ໄດ້ແກ່ ເປັນຄົນຫຼົງ ຄື ໄປຕາມອະວິດຊາ ບໍ່ມີຄວາມຮູ້ ບໍ່ມີປັນຍາແຈ່ມກະຈ່າງ ມີປັນຍາປຶກ

ຄຳວ່າ ໃນລະຫວ່າງ ອະທິບາຍວ່າ ຂ້າພຣະອົງບໍ່ຮູ້ ບໍ່ບັນລຸ ບໍ່ຮູ້ ບໍ່ໄດ້ ບໍ່ໄດ້ສຳຜັດ ບໍ່ໄດ້ເຮັດໃຫ້ແຈ້ງທຳ ທິດຖິ ປະຕິປະທາ ມັກ ຂອງພຣະອົງແລ້ວ ເພິ່ງທຳກາລະກິຣິຍາສາໃນລະຫວ່າງ ລວມຄວາມວ່າ ຂໍຂ້າພຣະອົງຢ່າໄດ້ເປັນຄົນຫຼົງເສຍຫາຍໃນລະຫວ່າງນີ້ເລີຍ

ຄຳວ່າ ຂໍພຣະອົງໂຜດຕັດບອກທຳ ໃນຄຳວ່າ ຂໍພຣະອົງໂຜດຕັດບອກ ທຳ ຯລຯ ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້ ອະທິບາຍວ່າ ຂໍພຣະອົງໂຜດຕັດບອກ ຄື ສະແດງບັນຍັດ ກຳນົດເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດພົມມະຈັນ ທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ພ້ອມທັງອັດຖະ ແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ນິບພານ ແລະປະຕິປະທາເຄື່ອງດຳເນີນໄປສູ່ນິບພານ ລວມຄວາມວ່າ ຂໍພຣະອົງໂຜດຕັດບອກທຳ

ຄຳວ່າ ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້ ໄດ້ແກ່ ເຊິ່ງຂ້າພຣະອົງເພິ່ງຮູ້ ຄື ເພິ່ງຮູ້ທົ່ວ ຮູ້ຊັດແຈ້ງ ຮູ້ສະເພາະ ແທງຕະຫຼອດ ບັນລຸ ຖືກຕ້ອງ ເຮັດໃຫ້ແຈ້ງ ລວມຄວາມວ່າ ຂໍພຣະອົງໂຜດຕັດບອກທຳ ฯລฯ ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້

ຄຳວ່າ ທີ່ເປັນເຄື່ອງລະຊາດ ແລະຊະຣາໃນໂລກນີ້ ອະທິບາຍວ່າ ທີ່ເປັນເຄື່ອງລະ ຄື ເປັນເຄື່ອງເຂົ້າໄປສະງົບ ເປັນເຄື່ອງສະລັດຖິ້ມ ເປັນເຄື່ອງຣະງັບຊາດຊະຣາ ແລະມໍຣະນະ ຄື ອະມະຕະນິບພານໃນໂລກນີ້ເອງ ລວມຄວາມວ່າ ທີ່ເປັນເຄື່ອງລະຊາດ ແລະຊະຣາໃນໂລກນີ້ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ຂ້າພຣະອົງຊະຣາພາບແລ້ວ ບໍ່ມີກຳລັງ
ຜິວພັນບໍ່ຜຸດຜ່ອງ ຕາບໍ່ແຈ່ມໃສ ຫູຟັງບໍ່ແຈ້ງ
ຂໍຂ້າພຣະອົງຢ່າໄດ້ເປັນຄົນຫຼົງເສຍຫາຍໃນລະຫວ່າງນີ້ເລີຍ
ຂໍພຣະອົງໂຜດຕັດບອກທຳທີ່ເປັນເຄື່ອງລະຊາດແລະຊະຣາ
ໃນໂລກນີ້ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້

[໖໐] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປິງຄິຍະ)

ຊົນທັງຫຼາຍເຫັນຊົນອື່ນ ໆ ເດືອດຮ້ອນຢູ່
ຍ້ອນຮູບທັງຫຼາຍແລ້ວ ຍັງຜະໝາດເຈັບປວດຍ້ອນຮູບທັງຫຼາຍ
ປິງຄິຍະ ຍ້ອນແນວນັ້ນ ທ່ານຈຶ່ງເປັນຜູ້ບໍ່ຜະໝາດ
ລະຮູບສາໃຫ້ໄດ້ ເພື່ອຈະບໍ່ເກີດອີກຕໍ່ໄປ (๘)

## ວ່າດ້ວຍວິທີການລົງໂທດ

ຄຳວ່າ ຍ້ອນຮູບທັງຫຼາຍ ໃນຄຳວ່າ ເຫັນຊົນອື່ນ ໆ ເດືອດຮ້ອນຢູ່ຍ້ອນຮູບທັງຫຼາຍ ໄດ້ແກ່ ມະຫາພູຕະຮູບ ๔ ແລະຮູບທີ່ອາໄສມະຫາພູຕະຮູບ ๔ ອະທິບາຍວ່າ ເຫຼົ່າສັດ ພາກັນລຳບາກເດືອດຮ້ອນ ຄື ຍາກລຳບາກ ຖືກເຂົາຂ້າຟັນ ຍ້ອນຮູບເປັນເຫດ ຍ້ອນຮູບ ເປັນປັດໄຈ ຍ້ອນຮູບເປັນການ ພຣະຣາຊາຊົງຮັບສັ່ງໃຫ້ລົງອາຍາດ້ວຍປະການຕ່າງ ໆ

ຄື ໃຫ້ຄ່ຽນດ້ວຍແສ້ແດ່ ໃຫ້ຄ່ຽນດ້ວຍຫວາຍແດ່ ໃຫ້ຕີດ້ວຍໄມ້ພອງແດ່ ຕັດມືແດ່ ຕັດຕີນແດ່ ຕັດທັງມືແລະຕີນແດ່ ຕັດໃບຫູແດ່ ຕັດດັງແດ່ ຕັດທັງໃບຫູແລະດັງແດ່ ວາງກ້ອນເຫຼັກແດງເທິງຫົວແດ່ ຖະລົກໜັງຫົວແລ້ວຂັດໃຫ້ຂາວເໝືອນສັງແດ່ ເອົາໄຟຢັດປາກຈົນເລືອດໄຫຼເໝືອນປາກຣາຫູແດ່ ເອົາຜ້າພັນຕົວທົດລາດດ້ວຍນ້ຳມັນແລ້ວຈູດໄຟເຜົາແດ່ ພັນມືແລ້ວຈູດໄຟຕາງຄົບເພີງແດ່ ຖະລົກໜັງຕັ້ງແຕ່ຄໍເຖິງຂໍ້ຕີນໃຫ້ລຸກຍ່າງຢຽບໜັງຈົນລົ້ມລົງແດ່ ຖະລົກໜັງຕັ້ງແຕ່ຄໍເຖິງບັ້ນແອວ ເຮັດໃຫ້ແນມເບິ່ງເໝືອນນຸ່ງຜ້າຄາກອງແດ່ ສວມປອກເຫຼັກຢູ່ແຂນສອກ ແລະເຂົ່າ

ແລ້ວສຽບຫຼາວທັງຫ້າທິດເອົາໄຟເຜົາແດ່ ໃຊ້ເບັດກ່ຽວໜັງຊີ້ນເອັນອອກມາແດ່ ປາດຊີ້ນອອກເປັນຕ່ອນ ໆ ເໝືອນຫຼຽນກະສາບແດ່ ປາດໜັງຊີ້ນເອັນອອກ ເຫຼືອໄວ້ແຕ່ກະດູກແດ່ ໃຊ້ຫຼາວແທງຊ່ອງຫູໃຫ້ຊອດເຖິງກັນແດ່ ສຽບໃຫ້ຕິດດິນແລ້ວຈັບເຂົາໝຸນໄດ້ຮອບແດ່ ທຸບກະດູກໃຫ້ແຫຼກແລ້ວຖະລົກໜັງອອກເຫຼືອໄວ້ແຕ່ກອງຊີ້ນເໝືອນຕັ່ງໃບໄມ້ແດ່ ຫົດຕົວດ້ວຍນໍ້າມັນທີ່ກໍາລັງເດືອດພ່ານແດ່ ໃຫ້ໝາກັດກິນຈົນເຫຼືອແຕ່ກະດູກແດ່ ໃຫ້ນອນເທິງຫຼາວທັງເປັນແດ່ ເອົາດາບຕັດຫົວແດ່ ເຫຼົ່າສັດພາກັນລໍາບາກເດືອດຮ້ອນ ຄື ຍາກລໍາບາກ ຖືກເຂົາຂ້າຟັນ ຍ້ອນຮູບເປັນເຫດຍ້ອນຮູບເປັນປັດໄຈ ຍ້ອນຮູບເປັນເຈົ້າການ ແນວນີ້

(ຊົນທັງຫຼາຍ) ເຫັນ ຄື ແນມເຫັນ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງເຫຼົ່າສັດຜູ້ລໍາບາກເດືອດຮ້ອນ ຄື ຍາກລໍາບາກ ຖືກເຂົາຂ້າຟັນ ແນວນີ້ ລວມຄວາມວ່າເຫັນຊົນອື່ນ ໆ ເດືອດຮ້ອນຢູ່ຍ້ອນຮູບທັງຫຼາຍ

ຄໍາວ່າ ປິງຄິຍະ ໃນຄໍາວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປິງຄິຍະ ເປັນຄໍາທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄໍາວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄໍາກ່າວໂດຍຄວາມເຄົາລົບ ຯລຯ ຄໍາວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າປິງຄິຍະ

ຄໍາວ່າ ເຈັບປວດ ໃນຄໍາວ່າ ຊົນທັງຫຼາຍ ຯລຯ ຍັງຜະໝາດ ເຈັບປວດຍ້ອນຮູບ ທັງຫຼາຍ ອະທິບາຍວ່າ ຍ່ອມເຈັບປວດ ຄື ດິ້ນຮົນ ກະສັບກະສ່າຍ ເດືອດຮ້ອນ ເຈັບປ່ວຍ (ທຸກກາຍ) ທຸກໃຈ ຄື ຍ່ອມເຈັບປວດ ດິ້ນຮົນ ກະສັບກະສ່າຍ ເດືອດຮ້ອນ ເຈັບປ່ວຍທຸກໃຈ ດ້ວຍໂຣກຕາ ໄດ້ແກ່ ເຈັບປວດ ດິ້ນຮົນ ກະສັບກະສ່າຍ ເດືອດຮ້ອນ ເຈັບປ່ວຍ ທຸກໃຈ ດ້ວຍໂຣກຫູ ຯລຯ ດ້ວຍໂຣກກາຍ ຯລຯ ດ້ວຍສໍາຜັດແຫ່ງເຫຼືອດຍຸງ ລົມ ແດດ ແລະສັດເລືອຄານລວມຄວາມວ່າ ເຈັບປວດຍ້ອນຮູບທັງຫຼາຍ

ອີກໄນໜຶ່ງ ຊົນທັງຫຼາຍ ເຈັບປວດ ດິ້ນຮົນ ກະສັບກະສ່າຍ ເດືອດຮ້ອນ ເຈັບປ່ວຍ ທຸກໃຈ ຍ້ອນຈັກຂຸເສື່ອມໄປ ເສຍໄປ ລະໄປ ຜັນປ່ຽນໄປ ຫາຍໄປ ອັນຕະຣະທານຫາຍໄປ ຯລຯ ຍ້ອນໂສຕະ ຯລຯ ຍ້ອນຄານະ ຯລຯ ຍ້ອນຊິວຫາ ຯລຯ ຍ້ອນກາຍ ຯລຯ ຍ້ອນຮູບ ຯລຯ ຍ້ອນສຽງ ຯລຯ ຍ້ອນກິ່ນ ຯລຯ ຍ້ອນຣົດ ຯລຯ ຍ້ອນໂຜດຖັບພະ ຯລຯ ຍ້ອນຕະກູນ ຯລຯ ຍ້ອນຄະນະ ຯລຯ ຍ້ອນອາວາດ ຯລຯ ຍ້ອນລາບ ຯລຯ ຍ້ອນຍົດ ຯລຯ ຍ້ອນສັນເສີນ ຯລຯ ຍ້ອນສຸກ ຯລຯ ຍ້ອນຈີວອນ ຯລຯ ຍ້ອນບິນທະບາດ ຯລຯ ຍ້ອນເສນາສະນະຯລຯ ຍ້ອນຄິລານະປັດໄຈເພສັດບໍຣິຂານ ເສື່ອມໄປ ເສຍໄປ ລະໄປ ຜັນປ່ຽນໄປ ຫາຍໄປ ອັນຕະຣະທານຫາຍໄປ

ຄໍາວ່າ ຊົນທັງຫຼາຍ ໄດ້ແກ່ ກະສັດ ພາມ ແພດ ສູດ ຄະລືຫັດ ບັນພະຊິດ ເທວະດາແລະມະນຸດ

## ວ່າດ້ວຍຄວາມຜະໝາດ

ຄຳວ່າ ຍັງຜະໝາດ ອະທິບາຍວ່າ ຂໍກ່າວເຖິງຄວາມຜະໝາດ ຄວາມປ່ອຍຈິດໄປ ຫຼື ການເພີ່ມພູນຄວາມປ່ອຍຈິດໄປໃນກາມມະຄຸນ ໕ ດ້ວຍກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຫຼື ການເຮັດໂດຍບໍ່ເຄົາລົບ ການເຮັດທີ່ບໍ່ໃຫ້ຕິດຕໍ່ ການເຮັດທີ່ບໍ່ໝັ້ນຄົງ ຄວາມປະພຶດທໍ້ຖອຍ ຄວາມປະຖິ້ມສັນທະ ຄວາມປະຖິ້ມທຸຣະ ຄວາມບໍ່ເສບ ຄວາມບໍ່ຈະເລີນ ຄວາມບໍ່ເຮັດໃຫ້ຫຼາຍ ຄວາມຕັ້ງໃຈບໍ່ຈິງ ຄວາມບໍ່ໝັ່ນປະກອບ ຄວາມຜະໝາດ ໃນການຈະເລີນກຸສົນທຳທັງຫຼາຍ ຊື່ວ່າຄວາມຜະໝາດ ຄວາມຜະໝາດ ກິຣິຍາທີ່ຜະໝາດ ພາວະທີ່ຜະໝາດມີລັກສະນະເຊັ່ນວ່າ ນີ້ຕັດຮຽກວ່າ ຄວາມຜະໝາດ ຊົນທັງຫຼາຍຜູ້ປະກອບດ້ວຍຄວາມຜະໝາດນີ້ ຊື່ວ່າ ຜູ້ຜະໝາດ ລວມຄວາມວ່າ ຊົນທັງຫຼາຍ ຯລຯ ຍັງຜະໝາດ ເຈັບປວດຍ້ອນຮູບທັງຫຼາຍ

ຄຳວ່າ ຍ້ອນແນວນັ້ນ ໃນຄຳວ່າ ປີງຄິຍະ ຍ້ອນແນວນັ້ນ ທ່ານຈິ່ງເປັນຜູ້ບໍ່ຜະໝາດ ອະທິບາຍວ່າ ຍ້ອນແນວນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນ ທ່ານເຫັນໂທດໃນຮູບແນວນີ້ຢູ່ ລວມຄວາມວ່າ ປີງຄິຍະ ຍ້ອນແນວນັ້ນ ທ່ານຈິ່ງເປັນຜູ້ບໍ່ຜະໝາດ

ຄຳວ່າ ຈິ່ງເປັນຜູ້ບໍ່ຜະໝາດ ອະທິບາຍວ່າ ທ່ານຈິ່ງມີປົກກະຕິເຮັດໂດຍເຄົາລົບ ເຮັດຕິດຕໍ່ ຯລຯ ຊື່ວ່າບໍ່ຜະໝາດໃນກຸສົນທຳທັງຫຼາຍ ລວມຄວາມວ່າ ປີງຄິຍະ ຍ້ອນແນວນັ້ນ ທ່ານຈິ່ງເປັນຜູ້ບໍ່ຜະໝາດ

ຄຳວ່າ ຮູບ ໃນຄຳວ່າ ລະຮູບສາໃຫ້ໄດ້ ເພື່ອຈະບໍ່ເກີດອີກຕໍ່ໄປ ໄດ້ແກ່ ມະຫາພູຕະຮູບ ໔ ແລະຮູບທີ່ອາໄສມະຫາພູຕະຮູບ ໔

ຄຳວ່າ ລະຮູບສາໃຫ້ໄດ້ ອະທິບາຍວ່າ ລະຮູບ ຄື ລະຖິ້ມຮູບ ລະຮູບໃຫ້ໝົດ ເຮັດໃຫ້ຮູບໝົດສິ້ນໄປ ໃຫ້ຮູບເຖິງຄວາມບໍ່ມີອີກ

ຄຳວ່າ ເພື່ອຈະບໍ່ເກີດອີກຕໍ່ໄປ ອະທິບາຍວ່າ ຮູບຂອງທ່ານເພິ່ງດັບສາໃນພົບນີ້ ສັນໃດປະຕິສົນທິບໍ່ເພິ່ງບັງເກີດໃນກາມທາດ ຮູບທາດ ຫຼື ອະຮູບທາດ ກາມະພົບຮູບພົບ ຫຼື ອະຮູບພົບ ສັນຍາພົບ ອະສັນຍາພົບ ຫຼື ເນວະສັນຍານາສັນຍາພົບ ເອກະໂວກາຣະພົບ ຈະຕຸໂວກາຣະພົບ ຫຼື ປັນຈະໂວກາຣະພົບ ຄະຕິ ອຸປະບັດ ປະຕິສົນທິ ພົບ ສົງສານ ຫຼື ວັດຕະຕໍ່ໄປ ໄດ້ແກ່ ບໍ່ເພິ່ງເກີດ ບໍ່ເພິ່ງເກີດຂຶ້ນ ບໍ່ເພິ່ງບັງເກີດ ບໍ່ເພິ່ງບັງເກີດຂຶ້ນ ຄື ເພິ່ງດັບ

ເພິ່ງເຂົ້າໄປສະງົບ ເພິ່ງເຖິງຄວາມຕັ້ງຢູ່ບໍ່ໄດ້ ເພິ່ງຣະງັບໄປໃນພົບນີ້ເອງ ສັນນັ້ນ ລວມຄວາມວ່າ ລະຮູບສາໃຫ້ໄດ້ ເພື່ອຈະບໍ່ເກີດອີກຕໍ່ໄປ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າ

ຊົນທັງຫຼາຍເຫັນຊົນອື່ນ ໆ ເດືອດຮ້ອນຢູ່  
ຍ້ອນຮູບທັງຫຼາຍແລ້ວ ຍັງຜະໝາດເຈັບປວດຍ້ອນຮູບທັງຫຼາຍ  
ປີງຄິຍະ ຍ້ອນແນວນັ້ນ ທ່ານຈິ່ງເປັນຜູ້ບໍ່ຜະໝາດ  
ລະຮູບສາໃຫ້ໄດ້ ເພື່ອຈະບໍ່ເກີດອີກຕໍ່ໄປ

[໗໑] (ທ່ານປິງຄິຍະທູນຖາມວ່າ)

ທິດໃຫຍ່ ໔ ທິດນ້ອຍ ໔ ທິດເບື້ອງເທິງ ໑
ທິດເບື້ອງລຸ່ມ ໑ ເຫຼົ່ານີ້ລວມເປັນ ໑໐
ສິ່ງໃດ ໆ ໃນໂລກທີ່ພຣະອົງບໍ່ຊົງເຫັນ ບໍ່ຊົງໄດ້ຍິນ
ບໍ່ຊົງຮູ້ ຫຼື ບໍ່ຊົງຮູ້ແຈ້ງ ບໍ່ໄດ້ມີເລີຍ
ຂໍພຣະອົງໂຜດຕັດບອກທຳທີ່ເປັນເຄື່ອງລະຊາດແລະຊະຣາ
ໃນໂລກນີ້ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້ (໓)

ຄຳວ່າ ທິດໃຫຍ່ ໔ ທິດນ້ອຍ ໔ ທິດເບື້ອງເທິງ ໑ ທິດເບື້ອງລຸ່ມ ໑ ເຫຼົ່ານີ້ລວມເປັນ ໑໐ ໄດ້ແກ່ ທິດທັງ ໑໐

ຄຳວ່າ ສິ່ງໃດ ໆ ໃນໂລກທີ່ພຣະອົງບໍ່ຊົງເຫັນ ບໍ່ຊົງໄດ້ຍິນ ບໍ່ຊົງຮູ້ ຫຼືບໍ່ຊົງຮູ້ແຈ້ງ ບໍ່ໄດ້ມີເລີຍ ອະທິບາຍວ່າ ສິ່ງໃດ ໆ ຄື ປະໂຫຍດຕົນ ປະໂຫຍດຜູ້ອື່ນ ຫຼື ປະໂຫຍດທັງສອງຝ່າຍ ປະໂຫຍດໃນພົບປັດຈຸບັນ ຫຼື ປະໂຫຍດໃນພົບໜ້າ ປະໂຫຍດຕື້ນຫຼືປະໂຫຍດເລິກ ປະໂຫຍດລີ້ລັບ ຫຼື ປະໂຫຍດປົດບັງ ປະໂຫຍດທີ່ຄວນແນະນຳ ຫຼື ປະໂຫຍດທີ່ແນະນຳແລ້ວ ປະໂຫຍດທີ່ບໍ່ມີໂທດ ຫຼື ປະໂຫຍດທີ່ບໍ່ມີກິເລດ ປະໂຫຍດ ທີ່ຜ່ອງແຜ້ວ ຫຼື ປະໂຫຍດຢ່າງຍິ່ງ ທີ່ພຣະອົງບໍ່ຊົງເຫັນ ບໍ່ຊົງໄດ້ຍິນ ບໍ່ຊົງຮູ້ ຫຼື ບໍ່ຊົງຮູ້ແຈ້ງ ບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ ລວມຄວາມວ່າ ສິ່ງໃດ ໆ ໃນໂລກ ທີ່ພຣະອົງບໍ່ຊົງເຫັນ ບໍ່ຊົງໄດ້ຍິນ ບໍ່ຊົງຮູ້ ຫຼື ບໍ່ຊົງຮູ້ແຈ້ງບໍ່ໄດ້ມີເລີຍ

ຄຳວ່າ ຂໍພຣະອົງໂຜດຕັດບອກທຳ ຯລຯ ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້ ອະທິບາຍວ່າ ຂໍພຣະອົງໂຜດຕັດບອກ ຄື ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກເຮັດໃຫ້ງ່າຍ ປະກາດທຳທີ່ມີຄວາມງາມໃນເບື້ອງຕົ້ນ ຯລຯ ແລະປະຕິປະທາເຄື່ອງດຳເນີນໄປສູ່ນິບພານ

ຄຳວ່າ ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້ ໄດ້ແກ່ ເຊິ່ງຂ້າພຣະອົງເພິ່ງຮູ້ໄດ້ ເພິ່ງຮູ້ ແຈ່ມແຈ້ງ ເພິ່ງຮູ້ສະເພາະ ເພິ່ງແທງຕະຫຼອດ ເພິ່ງບັນລຸ ເພິ່ງຖືກຕ້ອງ ເພິ່ງເຮັດໃຫ້ແຈ້ງໄດ້ ລວມຄວາມວ່າ ຂໍພຣະອົງໂຜດຕັດບອກທຳ ຯລຯ ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້

ຄຳວ່າ ທີ່ເປັນເຄື່ອງລະຊາດ ແລະຊະຣາໃນໂລກນີ້ ອະທິບາຍວ່າ ທີ່ອັນເປັນເຄື່ອງລະ ຄື ເປັນເຄື່ອງເຂົ້າໄປສະງົບ ເປັນເຄື່ອງສະລັດຖິ້ມ ເປັນເຄື່ອງຣະງັບຊາດຊະຣາ ແລະມໍລະນະ ຄື ອະມະຕະນິບພານໃນໂລກນີ້ ລວມຄວາມວ່າ ທີ່ເປັນເຄື່ອງລະຊາດ ແລະຊະຣາໃນໂລກນີ້ ດ້ວຍເຫດນັ້ນ ພາມນັ້ນຈຶ່ງຂາບທູນວ່າ

ທິດໃຫຍ່ ໔ ທິດນ້ອຍ ໔ ທິດເບື້ອງເທິງ ໑
ທິດເບື້ອງລຸ່ມ ໑ ເຫຼົ່ານີ້ລວມເປັນ ໑໐
ສິ່ງໃດ ໆ ໃນໂລກທີ່ພຣະອົງບໍ່ຊົງເຫັນ ບໍ່ຊົງໄດ້ຍິນ
ບໍ່ຊົງຮູ້ ຫຼືບໍ່ຊົງຮູ້ແຈ້ງ ບໍ່ໄດ້ມີເລີຍ

ຂໍພຣະອົງໂຜດຕັດບອກທຳທີ່ເປັນເຄື່ອງລະຊາດແລະຊະຣາ
ໃນໂລກນີ້ ເຊິ່ງຂ້າພຣະອົງຈະເພິ່ງຮູ້ແຈ້ງໄດ້

[໗໔] (ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປິງຄິຍະ)

ທ່ານຈົ່ງເພ່ງພິຈາລະນາໝູ່ມະນຸດຜູ້ຖືກຕັນຫາຄອບງຳຈິດ
ເກີດຄວາມຮ້ອນຮົນ ຖືກຊະຣາຄອບງຳແລ້ວ
ປິງຄິຍະ ຍ້ອນແນວນັ້ນ ທ່ານຈົ່ງເປັນຜູ້ບໍ່ຜະໝາດ
ລະຕັນຫາສາໃຫ້ໄດ້ ເພື່ອຈະບໍ່ເກີດອີກຕໍ່ໄປ (໔)

ຄຳວ່າ ທ່ານຈົ່ງເພ່ງພິຈາລະນາໝູ່ມະນຸດຜູ້ຖືກຕັນຫາຄອບງຳຈິດ ອະທິບາຍວ່າ

ຄຳວ່າ ຕັນຫາ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ

ຄຳວ່າ ຜູ້ຖືກຕັນຫາຄອບງຳຈິດ ໄດ້ແກ່ ຜູ້ຖືກຕັນຫາຄອບງຳຈິດ ຄື ຜູ້ໄປຕາມຕັນຫາ ຜູ້ໄປຕາມອຳນາດຕັນຫາ ຜູ້ຊ່ານໄປຕາມຕັນຫາ ຜູ້ຈົມຢູ່ໃນຕັນຫາ ຜູ້ຖືກຕັນຫາຄອບງຳ ມີຈິດຖືກຕັນຫາຢຶດຄອງ

ຄຳວ່າ ໝູ່ມະນຸດ ເປັນຊື່ຮຽກສັດ

ຄຳວ່າ ເພ່ງພິຈາລະນາ ໄດ້ແກ່ ພິຈາລະນາ ຄື ແນມເຫັນ ແນມເບິ່ງ ເພ່ງພິນິດພິຈາລະນາເບິ່ງ ລວມຄວາມວ່າ ທ່ານຈົ່ງເພ່ງພິຈາລະນາໝູ່ມະນຸດຜູ້ຖືກຕັນຫາຄອບງຳຈິດ

ຄຳວ່າ ປິງຄິຍະ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປິງຄິຍະ ເປັນຄຳທີ່ພຣະຜູ້ມີພຣະພາກເຈົ້າຕັດຮຽກພາມນັ້ນໂດຍຊື່

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປິງຄິຍະ

ຄຳວ່າ ເກີດຄວາມຮ້ອນຮົນ ໃນຄຳວ່າ ເກີດຄວາມຮ້ອນຮົນ ຖືກຊະຣາຄອບງຳແລ້ວ ອະທິບາຍວ່າ ເກີດຄວາມຮ້ອນຮົນຍ້ອນຊາດ ເກີດຄວາມຮ້ອນຮົນຍ້ອນຊະຣາ ເກີດຄວາມຮ້ອນຮົນຍ້ອນພະຍາທິ ເກີດຄວາມຮ້ອນຮົນຍ້ອນມໍຣະນະ ເກີດຄວາມຮ້ອນຮົນຍ້ອນໂສກະປະຣິເທວະທຸກຂະ ໂທມະນັດ ອຸປາຍາດ ເກີດຄວາມຮ້ອນຮົນຍ້ອນທຸກເນື່ອງຈາກການເກີດໃນນະຣົກ ຯລຯ ເກີດຄວາມຮ້ອນຮົນຍ້ອນທຸກຄືທິດຖິວິບັດ ຄື ເກີດຄວາມຈັງໄຮ ເກີດອຸປັດທະວະ (ອັນຕະລາຍ) ເກີດອຸປະສັກ ລວມຄວາມວ່າ ເກີດຄວາມຮ້ອນຮົນ

ຄຳວ່າ ຖືກຊະຣາຄອບງຳແລ້ວ ໄດ້ແກ່ ຖືກຊະຣາຖືກຕ້ອງ ຄອບງຳ ຄື ກຸ້ມຮຸມ ຕາມປະກອບ ໄປຕາມຊາດ ຊະຣາຕິດຕາມ ພະຍາທິຄອບງຳ ມໍຣະນະຍ່ຳຍີ ບໍ່ມີບ່ອນປົກປ້ອງ ບໍ່ມີ

ບ່ອນຫຼົບຫຼີກ ບໍ່ມີບ່ອນເພິ່ງ ບໍ່ມີບ່ອນອາໄສ ລວມຄວາມວ່າ ເກີດຄວາມຮ້ອນຮົນ ຖືກຊະຣາຄອບງຳແລ້ວ

ຄຳວ່າ ຍ້ອນແນວນັ້ນ ໃນຄຳວ່າ ປິງຄິຍະ ຍ້ອນແນວນັ້ນ ທ່ານຈຶ່ງເປັນຜູ້ບໍ່ຜະໝາດ ອະທິບາຍວ່າ ຍ້ອນແນວນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນ ທ່ານເບິ່ງເຫັນໂທດແຫ່ງຕັນຫາແນວນີ້ ລວມຄວາມວ່າ ປິງຄິຍະຍ້ອນດັ່ງນັ້ນ

ຄຳວ່າ ທ່ານຈຶ່ງເປັນຜູ້ບໍ່ຜະໝາດ ອະທິບາຍວ່າ ທ່ານຈຶ່ງມີປົກກະຕິເຮັດໂດຍເຄົາລົບ ເຮັດຕິດຕໍ່ ຯລຯ ຊື່ວ່າບໍ່ຜະໝາດໃນກຸສົນທຳທັງຫຼາຍ ລວມຄວາມວ່າ ປິງຄິຍະ ຍ້ອນດັ່ງນັ້ນ ທ່ານຈຶ່ງເປັນຜູ້ບໍ່ຜະໝາດ

ຄຳວ່າ ລະຕັນຫາສາໃຫ້ໄດ້ ເພື່ອຈະບໍ່ເກີດອີກຕໍ່ໄປ ອະທິບາຍວ່າ

ຄຳວ່າ ຕັນຫາ ໄດ້ແກ່ ຣູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ

ຄຳວ່າ ລະຕັນຫາສາໃຫ້ໄດ້ ອະທິບາຍວ່າ ລະຕັນຫາ ຄື ລະຖິ້ມຕັນຫາ ລະຕັນຫາ ໃຫ້ໝົດ ເຮັດຕັນຫາໃຫ້ໝົດສິ້ນໄປ ເຮັດໃຫ້ຕັນຫາເຖິງຄວາມບໍ່ມີອີກ

ຄຳວ່າ ເພື່ອຈະບໍ່ເກີດອີກຕໍ່ໄປ ອະທິບາຍວ່າ ຣູບຂອງທ່ານເພິ່ງດັບໃນພົບນີ້ ສັນໃດປະຕິສົນທິພົບບໍ່ເພິ່ງບັງເກີດອີກໃນກາມທາດ ຣູບທາດ ອະຣູບທາດ ກາມະພົບ ຣູບພົບ ອະຣູບພົບ ສັນຍາພົບ ອະສັນຍາພົບ ເນວະສັນຍານາສັນຍາພົບ ເອກະໂວກາຣະພົບ ຈະຕຸໂວກາຣະພົບ ປັນຈະໂວກາຣະພົບ ຄະຕິ ອຸປະບັດ ປະຕິສົນທິພົບ ສົງສານ ຫຼື ວັດຕະຕໍ່ໄປ ໄດ້ແກ່ ບໍ່ເພິ່ງເກີດ ບໍ່ເພິ່ງເກີດຂຶ້ນ ບໍ່ເພິ່ງບັງເກີດ ບໍ່ເພິ່ງບັງເກີດຂຶ້ນ ຄື ດັບເຂົ້າໄປ ສະງົບ ເຖິງຄວາມຕັ້ງຢູ່ບໍ່ໄດ້ ຣະງັບໄປໃນພົບນີ້ເອງ ລວມຄວາມວ່າ ລະຕັນຫາສາໃຫ້ໄດ້ ເພື່ອຈະບໍ່ເກີດອີກຕໍ່ໄປ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຕອບວ່າ

ທ່ານຈຶ່ງເພ່ງພິຈາລະນາໝູ່ມະນຸດ ຜູ້ຖືກຕັນຫາຄອບງຳຈິດ
ເກີດຄວາມຮ້ອນຮົນ ຖືກຊະຣາຄອບງຳແລ້ວ
ປິງຄິຍະ ຍ້ອນແນວນັ້ນ ທ່ານຈຶ່ງເປັນຜູ້ບໍ່ຜະໝາດ
ລະຕັນຫາສາໃຫ້ໄດ້ ເພື່ອຈະບໍ່ເກີດອີກຕໍ່ໄປ

ພ້ອມກັບການຈົບຄາຖາ ທຳມະຈັກຂຸປາສະຈາກທຸລີ ປາສະຈາກມົນທິນວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ໄດ້ເກີດຂຶ້ນແກ່ເຫຼົ່າເທວະດາ ແລະມະນຸດຫຼາຍພັນ ຜູ້ມີສັນທະ ຄວາມພະຍາຍາມ ຄວາມປະສົງ ການອົບຮົມບຸນຍາປາຣະມີຮ່ວມກັນມາກັບພາມ ແລະພາມນັ້ນກໍໄດ້ເກີດທຳມະຈັກຂຸປາສະຈາກທຸລີ ປາສະຈາກມົນທິນວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນ ມີຄວາມດັບໄປເປັນທຳມະດາ ໜັງເສືອ ຊະດາ ຜ້າຄາກອງ ໄມ້ການເທົ້າ ເຕົ້ານ້ຳ ຜົມແລະໜວດ

ຂອງທ່ານກໍຫາຍໄປ ພ້ອມກັບການໄດ້ທຳຈັກຂຸ ທ່ານໄດ້ເປັນພິກຂຸມີຫົວໂລ້ນ ນຸ່ງຫົ່ມຜ້າກາສະວະ ຊົງສັງຄາຕິ ບາດ ແລະຈີວອນ ເພື່ອການປະຕິບັດເອື້ອປະໂຫຍດ ຈຶ່ງປະຄອງອັນຊະລີ ນັ່ງລົງນະມັດສະການພຣະຜູ້ມີພຣະພາກເຈົ້າໂດຍປະກາດວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ

**ປິງຄິຍະມານະວະປັນຫານິດເທດທີ ໑໖ ຈົບ**

# ໒. ປາຣາຍະນັດຖຸຕິຄາຖານິດເທດ

## ວ່າດ້ວຍການສະດຸດີທຳເປັນເຫດໃຫ້ເຖິງຝັ່ງ

[໘໑] (ພຣະທຳສັງຄາຫະກາຈານເມື່ອຈະສັນເສີນພຣະທຳເທດສະໜານີ້ ຈຶ່ງໄດ້ກ່າວໄວ້ດັ່ງນີ້ວ່າ)

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຄາຖານີ້ແລ້ວ
ເມື່ອປະທັບຢູ່ໃນປາສານະກະເຈດີແຄວ້ນມະຄົດ
ໄດ້ຊົງຮັບອາຣາດທະນາຂາບທູນຫຼາຍຄັ້ງ
ຈາກພາມ ໑໖ ຄົນ ຜູ້ເປັນ ສິດໃກ້ຊິດ
ໄດ້ຊົງພະຍາກອນບັນຫາແລ້ວ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຄາຖານີ້ແລ້ວ ໄດ້ແກ່ ໄດ້ຕັດປາຣາຍະນະວັກນີ້ແລ້ວ

ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນຄຳກ່າວໂດຍຄວາມເຄົາລົບ ຯລຯ ຄຳວ່າ ພຣະຜູ້ມີພຣະພາກເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຄາຖານີ້ແລ້ວ

ຄຳວ່າ ເມື່ອປະທັບຢູ່ ຯລຯ ແຄວ້ນມະຄົດ ໄດ້ແກ່ ໃນຊົນນະບົດທີ່ຊື່ວ່າ ມະຄົດ

ຄຳວ່າ ເມື່ອປະທັບຢູ່ ໄດ້ແກ່ ເມື່ອປະທັບຢູ່ ຄື ຊົງເຄື່ອນໄຫວ ຊົງເປັນໄປ ຊົງລ້ຽງພຣະຊົນຊີບ ຊົງດຳເນີນໄປ ຊົງຍັງພຣະຊົນຊີບໃຫ້ດຳເນີນໄປ

ຄຳວ່າ ໃນປາສານະກະເຈດີ ໄດ້ແກ່ ພຸດທະອາດຕັດຮຽກວ່າ ປາສານະກະເຈດີ ລວມຄວາມວ່າ ເມື່ອປະທັບຢູ່ ໃນປາສານະກະເຈດີ ແຄວ້ນມະຄົດ

ຄຳວ່າ ຈາກພາມ ໑໖ ຄົນ ຜູ້ເປັນສິດໃກ້ຊິດ ໄດ້ແກ່ ປິງຄິຍະພາມ ເປັນທີ່ປາຖະໜາ ປະພຶດຖືກໃຈ ເປັນຄົນຮັບໃຊ້ຂອງພາມພາວະຣີ ອະທິບາຍວ່າ ພາມ ເຫຼົ່ານັ້ນມີ ໑໖ ຄົນ ລວມທັງປິງຄິຍະມານົບ ລວມຄວາມວ່າ ຈາກພາມ ໑໖ ຄົນ ຜູ້ເປັນສິດໃກ້ຊິດ ແນວນີ້ແດ່

ອີກໄນໜຶ່ງ ພາມ ໑໖ ຄົນເຫຼົ່ານັ້ນ ເພິ່ງເປັນທີ່ປາຖະໜາ ປະພຶດຖືກພຣະຫະໄທ ເປັນປະຣິຈາຣິກາຂອງພຣະຜູ້ມີພຣະພາກພຸດທະເຈົ້າໄດ້ ລວມຄວາມວ່າ ຈາກພາມ ໑໖ ຄົນ ຜູ້ເປັນສິດໃກ້ຊິດ ແນວນີ້ແດ່

ຄຳວ່າ ໄດ້ຊົງຮັບອາຣາດທະນາ ໃນຄຳວ່າ ໄດ້ຊົງຮັບອາຣາດທະນາຂາບທູນຫຼາຍຄັ້ງໆລໆ ໄດ້ຊົງພະຍາກອນບັນຫາແລ້ວ ໄດ້ແກ່ ໄດ້ຊົງຮັບອາຣາດທະນາ ຄື ຮັບອັນເຊີນແລ້ວ

ຄຳວ່າ ຂາບທູນຫຼາຍຄັ້ງໄດ້ແກ່ ຂາບທູນຫຼາຍຄັ້ງ ຄື ທູນຖາມແລ້ວຖາມອີກ ທູນຂໍແລ້ວຂໍອີກ ທູນອັນເຊີນແລ້ວອັນເຊີນອີກ ທູນໃຫ້ຊົງປະກາດແລ້ວປະກາດອີກ

ຄຳວ່າ ໄດ້ຊົງພະຍາກອນບັນຫາແລ້ວ ອະທິບາຍວ່າ ໄດ້ຊົງພະຍາກອນແລ້ວ ຄື ບອກສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດບັນຫາແລ້ວ ລວມຄວາມວ່າ ໄດ້ຊົງຮັບອາຣາດທະນາຂາບທູນຫຼາຍຄັ້ງໆລໆໄດ້ຊົງພະຍາກອນບັນຫາແລ້ວ ດ້ວຍເຫດນັ້ນພຣະທຳສັງຄາຫະກາຈານຈຶ່ງກ່າວໄວ້ດັ່ງນີ້ວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຄາຖານີ້ແລ້ວ ເມື່ອປະທັບຢູ່ໃນປາສານະກະເຈດີ ແຄວ້ນມະຄົດ ໄດ້ຊົງຮັບອາຣາດທະນາຂາບທູນຫຼາຍຄັ້ງ ຈາກພາມ ໑໖ ຄົນ ຜູ້ເປັນສິດໃກ້ຊິດ ໄດ້ຊົງພະຍາກອນບັນຫາແລ້ວ

[໙໔] ຖ້າແມ່ນບຸກຄົນຮູ້ທົ່ວເຖິງອັດຖະ ຮູ້ທົ່ວເຖິງທຳແຫ່ງບັນຫາແຕ່ລະບັນຫາແລ້ວປະຕິບັດທຳຖືກຕ້ອງຕາມຫຼັກທຳ ກໍຈະເພິ່ງເຖິງຝັ່ງແຫ່ງຊະຣາ ແລະມໍຣະນະໄດ້ແນ່ນອນ ຍ້ອນທຳເຫຼົ່ານີ້ເປັນເຫດໃຫ້ເຖິງຝັ່ງ ຍ້ອນເຫດດັ່ງກ່າວມານີ້ນັ້ນ ທຳບັນລະຍາຍນີ້ ຈຶ່ງຊື່ວ່າປາຣາຍະນະ

ຄຳວ່າ ຖ້າແມ່ນ ໆລໆ ແຫ່ງບັນຫາແຕ່ລະບັນຫາ ອະທິບາຍວ່າ ຖ້າແມ່ນ ໆລໆ ແຫ່ງບັນຫາຂອງທ່ານອະຊິຕະ ແຕ່ລະບັນຫາ ຖ້າແມ່ນ ໆລໆ ແຫ່ງບັນຫາຂອງທ່ານປຸນນະກະແຕ່ລະບັນຫາ ຖ້າແມ່ນໆລໆ ແຫ່ງບັນຫາຂອງທ່ານເມດຕະຄູແຕ່ລະບັນຫາ ຖ້າແມ່ນ ໆລໆ ແຫ່ງບັນຫາຂອງທ່ານໂທຕະກະແຕ່ລະບັນຫາ ຖ້າແມ່ນ ໆລໆ ແຫ່ງບັນຫາຂອງທ່ານອຸປະສີວະ ແຕ່ລະບັນຫາ ຖ້າແມ່ນ ໆລໆ ແຫ່ງບັນຫາຂອງທ່ານນັນທະກະແຕ່ລະບັນຫາ ຖ້າແມ່ນ ໆລໆ ແຫ່ງບັນຫາຂອງທ່ານເຫມະກະແຕ່ລະບັນຫາ ຖ້າແມ່ນ ໆລໆ ແຫ່ງບັນຫາຂອງທ່ານໂຕເທີຍຍະ ແຕ່ລະບັນຫາ ຖ້າແມ່ນ ໆລໆ ແຫ່ງບັນຫາຂອງທ່ານກັປປະແຕ່ລະບັນຫາ ຖ້າແມ່ນ ໆລໆ ແຫ່ງບັນຫາຂອງທ່ານຊະຕຸກັນນີແຕ່ລະບັນຫາ ຖ້າແມ່ນ ໆລໆ ແຫ່ງບັນຫາຂອງທ່ານພັດທະຣາວຸດແຕ່ລະບັນຫາ ຖ້າແມ່ນ ໆລໆ ແຫ່ງບັນຫາຂອງທ່ານອຸໄທແຕ່ລະບັນຫາ ຖ້າແມ່ນ ໆລໆ ແຫ່ງບັນຫາຂອງທ່ານໂປສາລະແຕ່ລະບັນຫາ ຖ້າແມ່ນ ໆລໆ ແຫ່ງບັນຫາຂອງທ່ານໂມຄະຣາດແຕ່ລະບັນຫາ ຖ້າແມ່ນ ໆລໆ ແຫ່ງບັນຫາຂອງທ່ານປິງຄິຍະ ແຕ່ລະບັນຫາ ລວມຄວາມວ່າ ຖ້າແມ່ນ ໆລໆ ແຫ່ງບັນຫາແຕ່ລະບັນຫາ

ຄຳວ່າ ຮູ້ທົ່ວເຖິງອັດຖະ ຮູ້ທົ່ວເຖິງທຳ ອະທິບາຍວ່າ ບັນທານັ້ນ ໆ ເປັນທຳການວິສັດຊະນາ ເປັນອັດຖະ ບຸກຄົນຮູ້ ຄື ຮູ້ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງອັດຖະແລ້ວ ລວມຄວາມວ່າ ຮູ້ທົ່ວເຖິງອັດຖະ

ຄຳວ່າ ຮູ້ທົ່ວເຖິງທຳ ໄດ້ແກ່ ຮູ້ ຄື ຮູ້ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງທຳແລ້ວ ລວມຄວາມວ່າ ຮູ້ທົ່ວເຖິງທຳ

ຄຳວ່າ ປະຕິບັດທຳຖືກຕ້ອງຕາມຫຼັກທຳ ອະທິບາຍວ່າ ປະຕິບັດຂໍ້ປະຕິບັດຊອບ ການປະຕິບັດເໝາະສົມ ການປະຕິບັດທີ່ບໍ່ເປັນຂ້າເສິກ ການປະຕິບັດທີ່ເອື້ອປະໂຫຍດ ການປະຕິບັດທຳຖືກຕ້ອງຕາມຫຼັກທຳ ລວມຄວາມວ່າ ປະຕິບັດທຳຖືກຕ້ອງຕາມຫຼັກທຳ

ຄຳວ່າ ກໍຈະເພິ່ງເຖິງຝັ່ງແຫ່ງຊະຣາ ແລະມໍຣະນະໄດ້ແນ່ນອນ ອະທິບາຍວ່າ ອະມະຕະນິບພານ ຕັດຮຽກວ່າ ຝັ່ງແຫ່ງຊະຣາ ແລະມໍຣະນະ ໄດ້ແກ່ ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ

ຄຳວ່າ ກໍຈະເພິ່ງເຖິງຝັ່ງແຫ່ງຊະຣາ ແລະມໍຣະນະໄດ້ແນ່ນອນ ອະທິບາຍວ່າ ເພິ່ງເຖິງຝັ່ງ ຄື ບັນລຸຝັ່ງ ຖືກຕ້ອງຝັ່ງ ເຮັດໃຫ້ແຈ້ງຝັ່ງແຫ່ງຊະຣາແລະມໍຣະນະໄດ້ແນ່ນອນ ລວມຄວາມວ່າ ກໍຈະເພິ່ງເຖິງຝັ່ງແຫ່ງຊະຣາ ແລະມໍຣະນະໄດ້ແນ່ນອນ

ຄຳວ່າ ທຳເຫຼົ່ານີ້ເປັນເຫດໃຫ້ເຖິງຝັ່ງ ອະທິບາຍວ່າ ທຳເຫຼົ່ານີ້ເປັນເຫດໃຫ້ເຖິງຝັ່ງ ຄືໃຫ້ບັນລຸຝັ່ງ ໃຫ້ບັນລຸເຖິງຝັ່ງ ໃຫ້ຕາມບັນລຸເຖິງຝັ່ງ ຍ່ອມເປັນໄປເພື່ອຂ້າມຊະຣາແລະມໍຣະນະ ລວມຄວາມວ່າ ທຳເຫຼົ່ານີ້ເປັນເຫດໃຫ້ເຖິງຝັ່ງ

ຄຳວ່າ ຍ້ອນເຫດດັ່ງກ່າວມານີ້ນັ້ນ ໃນຄຳວ່າ ຍ້ອນເຫດດັ່ງກ່າວມານີ້ນັ້ນ ທຳບັນລະຍາຍນີ້ ອະທິບາຍວ່າ ຍ້ອນເຫດດັ່ງກ່າວມານີ້ນັ້ນ ຄື ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນ ລວມຄວາມວ່າ ຍ້ອນເຫດດັ່ງກ່າວ ມານີ້ນັ້ນ

ຄຳວ່າ ທຳບັນລະຍາຍນີ້ ໄດ້ແກ່ ປາຣາຍະນະວັກນີ້ ລວມຄວາມວ່າ ຍ້ອນເຫດດັ່ງກ່າວມານີ້ນັ້ນ ທຳບັນລະຍາຍນີ້

ຄຳວ່າ ຈຶ່ງຊື່ວ່າ ປາຣາຍະນະ ອະທິບາຍວ່າ ອະມະຕະນິບພານຮຽກວ່າ ຝັ່ງແຫ່ງຊະຣາແລະມໍຣະນະ ໄດ້ແກ່ ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ ມັກຮຽກວ່າ ອາຍະນະ ໄດ້ແກ່ ສຳມາທິດຖິ ໗ລ໗ ສຳມາສະມາທິ

ຄຳວ່າ ຈຶ່ງຊື່ວ່າ ໄດ້ແກ່ ເປັນຊື່ ເປັນການນັບ ການຂະໜານນາມ ບັນຍັດ ໗ລ໗ ຊື່ຮຽກສະເພາະ ລວມຄວາມວ່າ ຈຶ່ງຊື່ວ່າປາຣາຍະນະ ຍ້ອນເຫດນັ້ນ ພຣະທຳສັງຄາຫະກາຈານຈຶ່ງກ່າວໄວ້ດັ່ງນີ້ວ່າ

ຖ້າແມ່ນບຸກຄົນຮູ້ທົ່ວເຖິງອັດຖະ
ຮູ້ທົ່ວເຖິງທຳແຫ່ງບັນຫາແຕ່ລະບັນຫາແລ້ວ
ປະຕິບັດທຳຖືກຕ້ອງຕາມຫຼັກທຳ
ກໍຈະເພິ່ງເຖິງຝັ່ງແຫ່ງຊະຣາແລະມໍຣະນະໄດ້ແນ່ນອນ
ຍ້ອນທຳເຫຼົ່ານີ້ເປັນເຫດໃຫ້ເຖິງຝັ່ງ
ຍ້ອນເຫດດັ່ງກ່າວມານີ້ນັ້ນ ທຳບັນລະຍາຍນີ້ ຈຶ່ງຊື່ວ່າ ປາຣາຍະນະ

[໙໕] (໑) ອະຊິຕະ (໒) ຕິດສະເມດເຕີຍຍະ (໓) ປຸນນະກະ (໔) ເມດຕະຄູ (໕) ໂທຕະກະ (໖) ອຸປະສີວະ (໗) ນັນທະ (໘) ເຫມະກະ (໑)

[໙໖] (໙) ໂຕເທີຍຍະ (໑໐) ກັບປະ (໑໑) ຊະຕຸກັນນີ ຜູ້ເປັນບັນດິດ (໑໒) ພັດທະຣາວຸດ (໑໓) ອຸໄທ (໑໔) ໂປສາລະ (໑໕) ໂມຄະຣາດ ຜູ້ມີປັນຍາ (໑໖) ປິງຄິຍະ ຜູ້ເປັນມະຫາຣືສີ (໒)

[໙໗] ພາມ ໑໖ ຄົນນີ້ ພາກັນມາເຂົ້າເຝົ້າພຣະພຸດທະເຈົ້າ ຜູ້ຊົງພຽບພ້ອມດ້ວຍຈະຣະນະ ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ເມື່ອຈະທູນຖາມບັນຫາທີ່ລຸ້ມເລິກ ຈຶ່ງເຂົ້າໄປໃກ້ ພຣະພຸດທະເຈົ້າຜູ້ປະເສີດ (໓)

ຄຳວ່າ ນີ້ ໃນຄຳວ່າ ພາມ ໑໖ ຄົນນີ້ ພາກັນມາເຂົ້າເຝົ້າພຣະພຸດທະເຈົ້າ ໄດ້ແກ່ ພາມຜູ້ດຳເນີນໄປສູ່ຝັ່ງທັງ ໑໖ ຄົນ

## ວ່າດ້ວຍຄວາມໝາຍແຫ່ງພຸດທະ

ຄຳວ່າ ພຣະພຸດທະເຈົ້າ ໄດ້ແກ່ ພຣະຜູ້ມີພຣະພາກເຈົ້າ ເປັນພຣະສຳພັນຍູ ບໍ່ມີຄູອາຈານ ໄດ້ຕັດສະຮູ້ສັດຈະໃນທຳທີ່ບໍ່ເຄີຍໄດ້ສະດັບມາກ່ອນ ດ້ວຍພຣະອົງເອງ ຊົງບັນລຸຄວາມເປັນພຣະສັບພັນຍູໃນສັດຈະນັ້ນ ແລະຄວາມເປັນຜູ້ຊົງຊຳນານໃນພະລະທັງຫຼາຍ

ຄຳວ່າ ພຣະພຸດທະເຈົ້າ ອະທິບາຍ ວ່າ

ຊື່ວ່າພຣະພຸດທະເຈົ້າ ຍ້ອນມີຄວາມໝາຍວ່າແນວໃດ?
ຊື່ວ່າພຣະພຸດທະເຈົ້າ ຍ້ອນຕັດສະຮູ້ສັດຈະທັງຫຼາຍແລ້ວ
ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເຮັດໝູ່ສັດໃຫ້ຕັດສະຮູ້
ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນພຣະສັບພັນຍູ
ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ເຫັນທຳທັງປວງ
ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ຮູ້ທຳທີ່ຄວນຮູ້
ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ເບີກບານ
ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນພຣະຂີນາສົບ
ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ປາສະຈາກອຸປະກິເລດ

ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ປາສະຈາກຣາຄະໂດຍບໍ່ເຫຼືອ
ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ປາສະຈາກໂທສະໂດຍບໍ່ເຫຼືອ
ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ປາສະຈາກໂມຫະໂດຍບໍ່ເຫຼືອ
ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ປາສະຈາກກິເລດໂດຍບໍ່ເຫຼືອ
ຊື່ວ່າພຣະພຸດທະເຈົ້າ ຍ້ອນສະເດັດເຖິງທາງສາຍເອກ
ຊື່ວ່າພຣະພຸດທະເຈົ້າ ຍ້ອນຕັດສະຣູ້ອະນຸດຕະຣະສຳມາສຳໂພທິຍານລຳພັງພຣະອົງດຽວ

ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ກຳຈັດຄວາມບໍ່ຮູ້ໄດ້ແລ້ວ ຍ້ອນຊົງເປັນຜູ້ໄດ້ສະເພາະຄວາມຮູ້

ພຣະນາມວ່າ ພຣະພຸດທະເຈົ້າ ນີ້ ບໍ່ແມ່ນພຣະຊົນນີຊົງຕັ້ງ ບໍ່ແມ່ນພຣະຊະນົກຊົງຕັ້ງ ບໍ່ແມ່ນ ພຣະພາດາຊົງຕັ້ງ ບໍ່ແມ່ນພຣະພະຄິນີຊົງຕັ້ງ ບໍ່ແມ່ນມິດແລະອຳມາດຕັ້ງ ບໍ່ແມ່ນພຣະຍາດພີ່ນ້ອງ ແລະຜູ້ຮ່ວມສາຍໂລຫິດຊົງຕັ້ງ ເຫຼົ່າສະມະນະພາມບໍ່ໄດ້ຕັ້ງ ເຫຼົ່າເທວະດາບໍ່ໄດ້ຕັ້ງ

ຄຳວ່າ ພຣະພຸດທະເຈົ້າ ນີ້ ເປັນວິໂມກຂັນຕິກະນາມ ເປັນສັດສິກາບັນຍັດ ຂອງພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ເກີດຂຶ້ນພ້ອມກັບການຊົງໄດ້ສະເພາະພຣະສັບພັນຍຸຕະຍານທີ່ເຫງົ້າຕົ້ນໂພ ລວມຄວາມວ່າ ພຣະພຸດທະເຈົ້າ

ຄຳວ່າ ພາມ ໑໖ ຄົນນີ້ ພາກັນມາເຂົ້າເຝົ້າພຣະພຸດທະເຈົ້າ ອະທິບາຍວ່າ ພາມເຫຼົ່ານີ້ມາເຂົ້າເຝົ້າ ຄື ເຂົ້າໄປເຝົ້າ ເຂົ້າໄປນັ່ງໃກ້ ທູນຖາມແລ້ວ ທູນສອບຖາມພຣະພຸດທະເຈົ້າແລ້ວ

ຄຳວ່າ ຜູ້ຊົງພຽບພ້ອມດ້ວຍຈະຣະນະ ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ອະທິບາຍວ່າ ຄວາມສຳເລັດແຫ່ງສິນ ແລະອາຈາຣະ ຮຽກວ່າ ຈະຣະນະ

ສິນສັງວອນ ອິນຊີສັງວອນ ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກອາຫານ ຄວາມເປັນຜູ້ມີຄວາມພຽນເປັນເຄື່ອງຕື່ນຢູ່ສະເໝີ ສັດທຳ ໗ ຊານ ໔ ຊື່ວ່າຈະຣະນະ

ຄຳວ່າ ຜູ້ຊົງພຽບພ້ອມດ້ວຍຈະຣະນະ ໄດ້ແກ່ ຜູ້ຊົງພຽບພ້ອມດ້ວຍຈະຣະນະ ຄື ມີຈະຣະນະປະເສີດສຸດ ມີຈະຣະນະວິເສດສຸດ ມີຈະຣະນະຊັ້ນແນວໜ້າ ມີຈະຣະນະສູງສຸດ ມີຈະຣະນະປະເສີດ ລວມຄວາມວ່າ ຜູ້ຊົງພຽບພ້ອມດ້ວຍຈະຣະນະ

ຄຳວ່າ ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ອະທິບາຍວ່າ ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ພຣະຜູ້ມີພຣະພາກເຈົ້າ ຊົງສະແຫວງຫາ ຄື ຄົ້ນຫາ ເສາະຫາສິນຂັນໃຫຍ່ ຈຶ່ງຊື່ວ່າຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ຯລຯ

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າ ອັນເຫຼົ່າສັດຜູ້ມະເຫສັກ ສະແຫວງຫາ ຄົ້ນຫາ ເສາະຫາວ່າ ພຣະພຸດທະເຈົ້າປະທັບຢູ່ບ່ອນໃດ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ບ່ອນໃດ ພຣະຜູ້ຊົງເປັນເທບຍິ່ງກວ່າເທບປະທັບຢູ່ບ່ອນໃດ ພຣະຜູ້ຊົງອົງອາດທານກວ່ານໍຣະຊົນທັງຫຼາຍປະທັບຢູ່

ບ່ອນໃດ ຈຶ່ງຊື່ວ່າຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ລວມຄວາມວ່າ ຜູ້ຊົງພຽບພ້ອມດ້ວຍຈະຣະນະ ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່

ຄຳວ່າ ເມື່ອຈະທູນຖາມ ໃນຄຳວ່າ ເມື່ອຈະທູນຖາມບັນຫາທີ່ ລຸ່ມເລິກ ອະທິບາຍວ່າ ເມື່ອທູນຖາມ ຄື ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດ

ຄຳວ່າ ບັນຫາທີ່ ລຸ່ມເລິກ ໄດ້ແກ່ ບັນຫາອັນເລິກເຊິ່ງ ເຫັນໄດ້ຍາກ ຮູ້ຕາມໄດ້ຍາກ ລະອຽດ ປະນີດ ເຂົ້າເຖິງບໍ່ໄດ້ດ້ວຍຕັກກະ (ການໃຊ້ຄວາມຄິດ) ລຸ່ມເລິກ ບັນດິດເທົ່ານັ້ນທີ່ເພິ່ງຮູ້ໄດ້ ລວມຄວາມວ່າ ບັນຫາທີ່ ລຸ່ມເລິກ

ຄຳວ່າ ຈຶ່ງເຂົ້າໄປໃກ້ພຣະພຸດທະເຈົ້າຜູ້ປະເສີດ ອະທິບາຍວ່າ

ຄຳວ່າ ພຣະພຸດທະເຈົ້າ ໄດ້ແກ່ ພຣະຜູ້ມີພຣະພາກເຈົ້າ ຯລຯ ຄຳວ່າ ພຣະພຸດທະເຈົ້ານີ້ ເປັນສັດສິກາບັນຍັດ

ຄຳວ່າ ຜູ້ປະເສີດ ໄດ້ແກ່ ຜູ້ເລີດ ຜູ້ປະເສີດ ຄື ວິເສດສຸດ ຫົວໜ້າ ສູງສຸດ ປະເສີດ ລວມຄວາມວ່າ ພຣະພຸດທະເຈົ້າຜູ້ປະເສີດ

ຄຳວ່າ ຈຶ່ງເຂົ້າໄປໃກ້ ໄດ້ແກ່ ຈຶ່ງມາເຂົ້າເຝົ້າ ຄື ເຂົ້າເຝົ້າ ເຂົ້າໄປນັ່ງໃກ້ ທູນຖາມ ທູນສອບຖາມ ລວມຄວາມວ່າ ຈຶ່ງເຂົ້າໄປໃກ້ພຣະພຸດທະເຈົ້າຜູ້ປະເສີດ ດ້ວຍເຫດນັ້ນ ພຣະທຳສັງຄາຫະກາ ຈານຈຶ່ງກ່າວໄວ້ດັ່ງນີ້ວ່າ

ພາມ ໑໖ ຄົນນີ້ ພາກັນມາເຂົ້າເຝົ້າພຣະພຸດທະເຈົ້າ
ຜູ້ຊົງພຽບພ້ອມດ້ວຍຈະຣະນະ ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ເມື່ອຈະທູນຖາມບັນຫາທີ່ ລຸ່ມເລິກ
ຈຶ່ງເຂົ້າໄປໃກ້ພຣະພຸດທະເຈົ້າຜູ້ປະເສີດ

[໕໗] (ພຣະທຳສັງຄາຫະກາຈານກ່າວວ່າ)

ພຣະພຸດທະເຈົ້າ (ອັນພາມເຫຼົ່ານັ້ນ)
ທູນສອບຖາມບັນຫາແລ້ວ
ຊົງພະຍາກອນແກ່ພາມເຫຼົ່ານັ້ນຕາມຄວາມເປັນຈິງ
ພຣະພຸດທະມຸນີຊົງເຮັດໃຫ້ພາມທັງຫຼາຍພໍໃຈ
ດ້ວຍການຊົງພະຍາກອນບັນຫາທັງຫຼາຍ (໔)

ຄຳວ່າ ເຫຼົ່ານັ້ນ ໃນຄຳວ່າ ພຣະພຸດທະເຈົ້າ ຯລຯ ຊົງພະຍາກອນແກ່ພາມເຫຼົ່ານັ້ນ ໄດ້ແກ່ ພາມຜູ້ດຳເນີນໄປສູ່ຝັ່ງ ໑໖ ຄົນ

ຄຳວ່າ ພຣະພຸດທະເຈົ້າ ໄດ້ແກ່ ພຣະຜູ້ມີພຣະພາກເຈົ້າ ຯລຯ ຄຳວ່າ ພຣະພຸດທະເຈົ້າ ນີ້ ເປັນສັດສິກາບັນຍັດ

ຄຳວ່າ ຊົງພະຍາກອນແລ້ວ ອະທິບາຍວ່າ ພຣະພຸດທະເຈົ້າຊົງພະຍາກອນ ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດແກ່ພາມເຫຼົ່ານັ້ນ ລວມຄວາມວ່າ ພຣະພຸດທະເຈົ້າ ຯລຯ ຊົງພະຍາກອນແກ່ພາມເຫຼົ່ານັ້ນ

ຄຳວ່າ ທູນສອບຖາມບັນຫາແລ້ວ ໃນຄຳວ່າ ທູນສອບຖາມບັນຫາແລ້ວ ຯລຯ ຕາມຄວາມເປັນຈິງ ອະທິບາຍວ່າ ທູນສອບຖາມ ຄື ທູນຖາມ ທູນຂໍ ທູນອັນເຊີນ ທູນໃຫ້ຊົງປະກາດບັນຫາແລ້ວ

ຄຳວ່າ ຕາມຄວາມເປັນຈິງ ອະທິບາຍວ່າ ຄວນຕັດບອກແນວໃດ ກໍຕັດບອກແນວນັ້ນ ຄວນສະແດງແນວໃດ ກໍຊົງສະແດງແນວນັ້ນ ຄວນບັນຍັດແນວໃດ ກໍຊົງບັນຍັດແນວນັ້ນ ຄວນກຳນົດແນວໃດ ກໍຊົງກຳນົດແນວນັ້ນ ຄວນເປີດເຜີຍແນວໃດ ກໍຊົງເປີດເຜີຍແນວນັ້ນ ຄວນຈຳແນກແນວໃດ ກໍຊົງຈຳແນກແນວນັ້ນ ຄວນເຮັດໃຫ້ງ່າຍ ແນວໃດ ກໍຊົງເຮັດໃຫ້ງ່າຍແນວນັ້ນ ຄວນປະກາດແນວໃດ ກໍຊົງປະກາດແນວນັ້ນ ລວມຄວາມວ່າ ທູນສອບຖາມບັນຫາແລ້ວ ຯລຯ ຕາມຄວາມເປັນຈິງ

ຄຳວ່າ ດ້ວຍການຊົງພະຍາກອນບັນຫາທັງຫຼາຍ ອະທິບາຍວ່າ ດ້ວຍການຊົງພະຍາກອນ ຄື ດ້ວຍການບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດບັນຫາທັງຫຼາຍ ລວມຄວາມວ່າ ດ້ວຍການພະຍາກອນບັນຫາທັງຫຼາຍ

ຄຳວ່າ ຊົງເຮັດໃຫ້ ຯລຯ ພໍໃຈ ໃນຄຳວ່າ ພຣະພຸດທະມຸນີຊົງເຮັດໃຫ້ພາມພໍໃຈ ໄດ້ແກ່ ຊົງເຮັດໃຫ້ພໍໃຈ ຄື ເຮັດໃຫ້ດີໃຈ ໃຫ້ເຫຼື້ອມໃສ ໃຫ້ຍິນດີ ໃຫ້ພໍໃຈ

ຄຳວ່າ ພາມ ໄດ້ແກ່ ເຫຼົ່າພາມຜູ້ດຳເນີນໄປສູ່ຝັ່ງ ໑໖ ຄົນ

ຄຳວ່າ ມຸນີ ອະທິບາຍວ່າ ຍານທ່ານຮຽກວ່າ ໂມນະ ໄດ້ແກ່ ຄວາມຮູ້ທົ່ວ ກິຣິຍາ ທີ່ຮູ້ແຈ້ງ ຯລຯ ພຣະອົງກ້າວລ່ວງກິເລດເຄື່ອງຂ້ອງ ແລະຕັນຫາເໝືອນຕາໜ່າງໄດ້ແລ້ວ ຊື່ວ່າມຸນີ ລວມຄວາມວ່າ ພຣະພຸດທະມຸນີຊົງເຮັດໃຫ້ພາມທັງຫຼາຍພໍໃຈ ດ້ວຍເຫດນັ້ນ ພຣະທຳສັງຄາຫະກາຈານຈຶ່ງກ່າວວ່າ

ພຣະພຸດທະເຈົ້າ (ອັນພາມເຫຼົ່ານັ້ນ)
ທູນສອບຖາມບັນຫາແລ້ວ
ຊົງພະຍາກອນແກ່ພາມເຫຼົ່ານັ້ນຕາມຄວາມເປັນຈິງ
ພຣະພຸດທະມຸນີຊົງເຮັດໃຫ້ພາມທັງຫຼາຍພໍໃຈ
ດ້ວຍການຊົງພະຍາກອນບັນຫາທັງຫຼາຍ

[໓໙] (ພຣະທຳສັງຄາຫະກາຈານກ່າວວ່າ)

ພາມເຫຼົ່ານັ້ນ ອັນພຣະພຸດທະເຈົ້າຜູ້ມີພຣະຈັກຂຸ
ຊົງເປັນ ເຜົ່າພັນແຫ່ງພຣະອາທິດເຮັດໃຫ້ພໍໃຈແລ້ວ
ໄດ້ປະພຶດພົມມະຈັນໃນສຳນັກພຣະພຸດທະເຈົ້າ
ຜູ້ມີພຣະປັນຍາອັນປະເສີດ (໕)

ຄຳວ່າ ເຫຼົ່ານັ້ນ ໃນຄຳວ່າ ພາມເຫຼົ່ານັ້ນ ອັນພຣະພຸດທະເຈົ້າຜູ້ມີພຣະຈັກຂຸ ຯລຯ ເຮັດໃຫ້ພໍໃຈແລ້ວ ໄດ້ແກ່ ພາມຜູ້ດຳເນີນໄປສູ່ຝັ່ງ ໑໖ ຄົນ

ຄຳວ່າ ເຮັດໃຫ້ພໍໃຈແລ້ວ ໄດ້ແກ່ ເຮັດໃຫ້ພໍໃຈ ຄື ໃຫ້ດີໃຈ ໃຫ້ເຫຼື້ອມໃສ ໃຫ້ຍິນດີ ໃຫ້ພໍໃຈແລ້ວ ລວມຄວາມວ່າ ພາມເຫຼົ່ານັ້ນອັນພຣະພຸດທະເຈົ້າຜູ້ມີພຣະຈັກຂຸ ຯລຯ ເຮັດໃຫ້ພໍໃຈແລ້ວ

## ວ່າດ້ວຍພຣະຈັກຂຸ ໕ ຊະນິດ

ຄຳວ່າ ຜູ້ມີພຣະຈັກຂຸ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າມີພຣະຈັກຂຸດ້ວຍຈັກຂຸ ໕ ຊະນິດ ຄື

໑. ມີພຣະຈັກຂຸດ້ວຍມັງສະຈັກຂຸແດ່
໒. ມີພຣະຈັກຂຸດ້ວຍທິບພະຈັກຂຸແດ່
໓. ມີພຣະຈັກຂຸດ້ວຍປັນຍາຈັກຂຸແດ່
໔. ມີພຣະຈັກຂຸດ້ວຍພຸດທະຈັກຂຸແດ່
໕. ມີພຣະຈັກຂຸດ້ວຍສະມັນຕະຈັກຂຸແດ່

ພຣະຜູ້ມີພຣະພາກເຈົ້າມີພຣະຈັກຂຸດ້ວຍມັງສະຈັກຂຸ ເປັນແນວໃດ?

ຄື ຯລຯ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າມີພຣະຈັກຂຸດ້ວຍສະມັນຕະຈັກຂຸເປັນແນວນີ້ລວມຄວາມວ່າ ພາມເຫຼົ່ານັ້ນ ອັນພຣະພຸດທະເຈົ້າຜູ້ມີພຣະຈັກຂຸ ຯລຯ ເຮັດໃຫ້ພໍໃຈແລ້ວ

ຄຳວ່າ ພຣະພຸດທະເຈົ້າ ໃນຄຳວ່າ ອັນພຣະພຸດທະເຈົ້າ ຯລຯ ຊົງເປັນ ເຜົ່າພັນແຫ່ງພຣະອາທິດ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າ ຯລຯ ຄຳວ່າ ພຣະພຸດທະເຈົ້າ ນີ້ ເປັນສັດສິກາບັນຍັດ

ຄຳວ່າ ຊົງເປັນ ເຜົ່າພັນແຫ່ງພຣະອາທິດ ອະທິບາຍວ່າ ພຣະສຸຣິຍະຕັດຊຽກວ່າ ພຣະອາທິດ ພຣະສຸຣິຍະ ຊື່ວ່າເປັນພຣະໂຄດົມໂດຍພຣະໂຄດ ແມ່ນພຣະຜູ້ມີພຣະພາກເຈົ້າ ກໍຊົງເປັນພຣະໂຄດົມໂດຍພຣະໂຄດ ພຣະຜູ້ມີພຣະພາກເຈົ້າຈຶ່ງຍາກົດໂດຍໂຄດພຣະອາທິດ ຄືຊົງເປັນ ເຜົ່າພັນໂດຍໂຄດພຣະອາທິດ ຍ້ອນແນວນັ້ນ ພຣະພຸດທະເຈົ້າ ຈຶ່ງຊື່ວ່າຊົງເປັນເຜົ່າພັນແຫ່ງພຣະອາທິດ ລວມຄວາມວ່າ ອັນພຣະພຸດທະເຈົ້າ ຯລຯ ຊົງເປັນເຜົ່າພັນແຫ່ງພຣະອາທິດ

ຄຳວ່າ ໄດ້ປະພຶດພົມມະຈັນ ອະທິບາຍວ່າ ການງົດ ງົດເວັ້ນ ເວັ້ນຂາດ ເຈຕະນາ ງົດເວັ້ນ ການງົດເວັ້ນ ກິຣິຍາທີ່ບໍ່ເຮັດ ການບໍ່ເຮັດ ການບໍ່ລະເມີດ ການບໍ່ກ້າວລ່ວງແດນແຫ່ງການເຂົ້າເຖິງອະສັດທຳ ການທຳລາຍກິເລດດ້ວຍອະຣິຍະມັກ ຮຽກວ່າ ພົມມະຈັນ

ອັນໜຶ່ງ ອະຣິຍະມັກມີອົງ ໘ ຄື ສຳມາທິດຖິ ສຳມາສັງກັບປະ ສຳມາວາຈາ ສຳມາກຳມັນຕະ ສຳມາອາຊີວະ ສຳມາວາຍາມະ ສຳມາສະຕິ ສຳມາສະມາທິ ກໍຮຽກວ່າ ພົມມະຈັນ ໂດຍບໍ່ເຫຼືອ

ຄຳວ່າ ໄດ້ປະພຶດພົມມະຈັນ ໄດ້ແກ່ ປະພຶດ ຄື ໄດ້ປະພຶດ ສະມາທານປະພຶດ ພົມມະຈັນ ລວມຄວາມວ່າ ໄດ້ປະພຶດພົມມະຈັນ

ຄຳວ່າ ໃນສຳນັກພຣະພຸດທະເຈົ້າຜູ້ມີພຣະປັນຍາອັນປະເສີດ ໄດ້ແກ່ ພຣະພຸດທະເຈົ້າຜູ້ມີພຣະປັນຍາອັນປະເສີດ ຄື ມີພຣະປັນຍາອັນເລີດ ມີປັນຍາປະເສີດສຸດ ມີພຣະປັນຍາວິເສດສຸດ ມີພຣະປັນຍາຊັ້ນແນວໜ້າ ມີພຣະປັນຍາສູງສຸດ ມີພຣະປັນຍາປະເສີດ

ຄຳວ່າ ໃນສຳນັກ ໄດ້ແກ່ ໃນສຳນັກ ຄື ໃນບ່ອນໃກ້ ໃກ້ຄຽງ ບໍ່ໄກ ໃກ້ຊິດ ລວມຄວາມວ່າ ໃນສຳນັກພຣະພຸດທະເຈົ້າຜູ້ມີພຣະປັນຍາອັນປະເສີດ ດ້ວຍເຫດນັ້ນ ພຣະທຳສັງຄາຫະກາຈານຈຶ່ງກ່າວວ່າ

ພາມເຫຼົ່ານັ້ນ ອັນພຣະພຸດທະເຈົ້າຜູ້ມີພຣະຈັກຂຸ
ຊົງເປັນເຜົ່າພັນແຫ່ງພຣະອາທິດເຮັດໃຫ້ພໍໃຈແລ້ວ
ໄດ້ປະພຶດພົມມະຈັນໃນສຳນັກພຣະພຸດທະເຈົ້າ
ຜູ້ມີພຣະປັນຍາອັນປະເສີດ

[໑໐໐] (ພຣະທຳສັງຄາຫະກາຈານກ່າວວ່າ)

ການພະຍາກອນບັນຫາແຕ່ລະບັນຫາ
ທີ່ພຣະພຸດທະເຈົ້າຊົງສະແດງແລ້ວໂດຍປະການໃດ
ຜູ້ໃດປະຕິບັດຕາມໂດຍປະການນັ້ນ
ຜູ້ນັ້ນເພິ່ງຈາກບ່ອນບໍ່ແມ່ນຝັ່ງເຖິງຝັ່ງໄດ້ (໙)

ຄຳວ່າ ບັນຫາແຕ່ລະບັນຫາ ອະທິບາຍວ່າ ບັນຫາຂອງທ່ານອະຊິຕະ ແຕ່ລະບັນຫາ ບັນຫາຂອງທ່ານຕິດສະເມດເຕີຍຍະ ແຕ່ລະບັນຫາ ຯລຯ ບັນຫາຂອງທ່ານປິງຄິຍະ ແຕ່ລະບັນຫາ ລວມຄວາມວ່າ ບັນຫາແຕ່ລະບັນຫາ

ຄຳວ່າ ພຣະພຸດທະເຈົ້າ ໃນຄຳວ່າ ທີ່ພຣະພຸດທະເຈົ້າຊົງສະແດງແລ້ວໂດຍປະການໃດ ໄດ້ແກ່ ພຣະຜູ້ມີພຣະພາກເຈົ້າ ຯລຯ ຄຳວ່າ ພຣະພຸດທະເຈົ້າ ນີ້ ເປັນສັດສິກາບັນຍັດ

ຄຳວ່າ ທີ່ພຣະພຸດທະເຈົ້າຊົງສະແດງແລ້ວໂດຍປະການໃດ ອະທິບາຍວ່າ ທີ່ພຣະພຸດທະເຈົ້າຊົງບອກແລ້ວ ຄື ຊົງສະແດງແລ້ວ ບັນຍັດແລ້ວ ກຳນົດແລ້ວ ເປີດເຜີຍແລ້ວ ຈຳແນກແລ້ວ ເຮັດໃຫ້ງ່າຍແລ້ວ ປະກາດແລ້ວໂດຍປະການໃດ ລວມຄວາມວ່າ ທີ່ພຣະພຸດທະເຈົ້າຊົງສະແດງແລ້ວໂດຍປະການໃດ

ຄຳວ່າ ຜູ້ໃດປະຕິບັດຕາມໂດຍປະການນັ້ນ ອະທິບາຍວ່າ ເພິ່ງປະຕິບັດຂໍ້ປະຕິບັດຊອບ ການປະຕິບັດເໝາະສົມ ການປະຕິບັດທີ່ບໍ່ເປັນຂ້າເສິກ ການປະຕິບັດທີ່ເອື້ອປະໂຫຍດ ການປະຕິບັດທຳຖືກຕ້ອງຕາມຫຼັກທຳ ລວມຄວາມວ່າ ຜູ້ໃດປະຕິບັດຕາມໂດຍປະການນັ້ນ

ຄຳວ່າ ເພິ່ງຈາກບ່ອນບໍ່ແມ່ນຝັ່ງເຖິງຝັ່ງໄດ້ ອະທິບາຍວ່າ

ອະມະຕະນິບພານ ຄື ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ ຮຽກວ່າ ຝັ່ງ ກິເລດ ຂັນ ແລະອະພິສັງຂານຮຽກວ່າ ບ່ອນບໍ່ແມ່ນຝັ່ງ

ຄຳວ່າ ເພິ່ງຈາກບ່ອນບໍ່ແມ່ນຝັ່ງເຖິງຝັ່ງໄດ້ ອະທິບາຍວ່າ ເພິ່ງເຖິງຝັ່ງ ຄື ບັນລຸຝັ່ງ ຖືກຕ້ອງຝັ່ງ ເຮັດໃຫ້ແຈ້ງຝັ່ງ ຈາກບ່ອນບໍ່ແມ່ນຝັ່ງໄດ້ ລວມຄວາມວ່າ ເພິ່ງຈາກບ່ອນບໍ່ແມ່ນຝັ່ງເຖິງຝັ່ງໄດ້ ດ້ວຍ ເຫດນັ້ນ ພຣະທຳສັງຄາຫະກາຈານຈຶ່ງກ່າວວ່າ

ການພະຍາກອນບັນຫາແຕ່ລະບັນຫາ
ທີ່ພຣະພຸດທະເຈົ້າຊົງສະແດງແລ້ວໂດຍປະການໃດ
ຜູ້ໃດປະຕິບັດຕາມໂດຍປະການນັ້ນ
ຜູ້ນັ້ນເພິ່ງຈາກບ່ອນບໍ່ແມ່ນຝັ່ງເຖິງຝັ່ງໄດ້

[໑໐໑] (ພຣະທຳສັງຄາຫະກາຈານກ່າວວ່າ)

ບຸກຄົນເມື່ອຈະເລີນມັກອັນສູງສຸດ
ຈະເພິ່ງຈາກບ່ອນບໍ່ແມ່ນຝັ່ງເຖິງຝັ່ງໄດ້
(ຍ້ອນ) ມັກນັ້ນ (ເປັນໄປ) ເພື່ອໃຫ້ເຖິງຝັ່ງ
ຍ້ອນແນວນັ້ນ ມັກນັ້ນ ຈຶ່ງຊື່ວ່າປາຣາຍະນະ (໗)

ຄຳວ່າ ຈະເພິ່ງຈາກບ່ອນບໍ່ແມ່ນຝັ່ງເຖິງຝັ່ງໄດ້ ອະທິບາຍວ່າ ກິເລດ ຂັນ ແລະອະພິສັງຂານ ຮຽກວ່າ ບ່ອນບໍ່ແມ່ນຝັ່ງ

ອະມະຕະນິບພານ ຄື ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ ຮຽກວ່າ ຝັ່ງ

ຄຳວ່າ ຈະເພິ່ງຈາກບ່ອນບໍ່ແມ່ນຝັ່ງເຖິງຝັ່ງໄດ້ ອະທິບາຍວ່າ ເພິ່ງເຖິງຝັ່ງ ຄື ບັນລຸຝັ່ງ ຖືກຕ້ອງຝັ່ງ ເຮັດໃຫ້ແຈ້ງຝັ່ງ ຈາກບ່ອນບໍ່ແມ່ນຝັ່ງໄດ້ ລວມຄວາມວ່າ ຈະເພິ່ງຈາກບ່ອນບໍ່ແມ່ນຝັ່ງເຖິງຝັ່ງໄດ້

ຄຳວ່າ ມັກ ໃນຄຳວ່າ ເມື່ອຈະເລີນມັກອັນສູງສຸດ ໄດ້ແກ່ ອະຣິຍະມັກມີອົງ ໘ ຄື ສຳມາທິດຖິ ຯລຯ ສຳມາສະມາທິ ຮຽກວ່າ ມັກ

ຄຳວ່າ ອັນສູງສຸດ ໄດ້ແກ່ ເລີດ ຄື ປະເສີດ ວິເສດສຸດ ຊັ້ນແນວໜ້າ ສູງສຸດປະເສີດ ລວມຄວາມວ່າ ມັກອັນສູງສຸດ

ຄຳວ່າ ເມື່ອຈະເລີນ ໄດ້ແກ່ ເມື່ອຈະເລີນ ຄື ເມື່ອເສບຄຸ້ນ ເຮັດໃຫ້ຫຼາຍ ລວມຄວາມວ່າ ເມື່ອຈະເລີນມັກອັນສູງສຸດ

ຄຳວ່າ (ຍ້ອນ) ມັກນັ້ນ (ເປັນໄປ) ເພື່ອໃຫ້ເຖິງຝັ່ງ ໄດ້ແກ່

ມັກ ປັນຖະ ປະຖະ ປັດຊະ ອັນຊະສະ ວະຕຸມາຍະນະ
ນາວາ ອຸດຕະຣະເສຕຸ ກຸນລະ ພິສີ ແລະສັງກະມະ

ຄຳວ່າ (ເປັນໄປ) ເພື່ອໃຫ້ເຖິງຝັ່ງ ໄດ້ແກ່ (ເປັນໄປ) ເພື່ອໃຫ້ເຖິງຝັ່ງ ຄື ເພື່ອບັນລຸເຖິງຝັ່ງ ເພື່ອຕາມບັນລຸໃຫ້ເຖິງຝັ່ງ ເພື່ອຂ້າມຊະຣາ ແລະມໍຣະນະ ລວມຄວາມວ່າ (ຍ້ອນ) ມັກນັ້ນ (ເປັນໄປ) ເພື່ອໃຫ້ເຖິງຝັ່ງ

ຄຳວ່າ ຍ້ອນແນວນັ້ນ ໃນຄຳວ່າ ຍ້ອນແນວນັ້ນ ມັກນັ້ນຈຶ່ງຊື່ວ່າປາຣາຍະນະ ອະທິບາຍວ່າ ຍ້ອນການນັ້ນ ຍ້ອນເຫດນັ້ນ ຍ້ອນປັດໄຈນັ້ນ ຍ້ອນຕົ້ນເຫດນັ້ນ ໄດ້ແກ່ ອະມະຕະນິບພານ ອັນເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ ຮຽກວ່າ ຝັ່ງ ມັກ ຮຽກວ່າ ອາຍະນະ

ຄຳວ່າ ວ່າ ເປັນບົດສົນທິ ຯລຯ ຄຳວ່າ ວ່າ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງ ເຂົ້ານຳກັນ ລວມຄວາມວ່າ ຍ້ອນແນວນັ້ນ ມັກນັ້ນຈຶ່ງຊື່ວ່າ ປາຣາຍະນະ ດ້ວຍເຫດນັ້ນ ພຣະທຳສັງຄາຫະກາຈານຈຶ່ງກ່າວວ່າ

ບຸກຄົນເມື່ອຈະເລີນມັກອັນສູງສຸດ
ຈະເພິ່ງຈາກບ່ອນບໍ່ແມ່ນຝັ່ງເຖິງຝັ່ງໄດ້
(ຍ້ອນ) ມັກນັ້ນ (ເປັນໄປ) ເພື່ອໃຫ້ເຖິງຝັ່ງ
ຍ້ອນແນວນັ້ນ ມັກນັ້ນ ຈຶ່ງຊື່ວ່າປາຣາຍະນະ

**ປາຣາຍະນັດຖຸຕິຄາຖານິດເທດທີ ໑໗ ຈົບ**

# ໗. ປາຣາຍະນານຸຄີຕິຄາຖານິດເທດ

## ວ່າດ້ວຍເພງຂັບຕາມທຳເປັນເຫດໃຫ້ເຖິງຝັ່ງ

[໑໐໘] (ພຣະປິງຄິຍະເຖຣະກ່າວແກ່ພາມພາວະຣີທ່ານກາງຊຸມຊົນ ດັ່ງນີ້)

ອາດຕະມາພາບຈັກກ່າວບົດຂັບທີ່ເປັນເຫດໃຫ້ເຖິງຝັ່ງ
ຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້
ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ປາສະຈາກມົນທິນ
ມີພຣະປັນຍາເໝືອນພູຣິ ປາສະຈາກກາມ
ຊົງບໍ່ມີກິເລດດັ່ງປ່າ ຜູ້ເປັນນາຄະ
ຊົງເຫັນແນວໃດ ກໍຕັດແນວນັ້ນ
ຈະເພິ່ງກ່າວຄຳຕົວະຍ້ອນເຫດແຫ່ງອັນໃດນໍ (໑)

ຄຳວ່າ ອາດຕະມາພາບຈັກກ່າວບົດຂັບທີ່ເປັນເຫດໃຫ້ເຖິງຝັ່ງ ອະທິບາຍວ່າ ອາດຕະມາພາບຈັກກ່າວບົດຂັບ ຈັກກ່າວບົດຂັບທີ່ພຣະພຸດທະເຈົ້າຕັດແລ້ວ ຈັກກ່າວບົດຂັບທີ່ພຣະພຸດທະເຈົ້າຊົງບອກແລ້ວ ຈັກກ່າວບົດຂັບທີ່ພຣະພຸດທະເຈົ້າຊົງພາສິດໄວ້ແລ້ວ ລວມຄວາມວ່າ ອາດຕະມາພາບຈັກກ່າວບົດຂັບທີ່ເປັນເຫດໃຫ້ເຖິງຝັ່ງ

ຄຳວ່າ ດັ່ງນີ້ ໃນຄຳວ່າ ທ່ານປິງຄິຍະກ່າວ ຯລຯ ດັ່ງນີ້ ເປັນບົດສົນທິ ຯລຯ ຄຳວ່າ ດັ່ງນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ທ່ານ ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາລົບ ຄຳວ່າ ທ່ານນີ້ ເປັນຄຳກ່າວທີ່ມີຄວາມເຄົາລົບ ແລະຄວາມຢຳເກງ

ຄຳວ່າ ປິງຄິຍະ ເປັນຊື່ ເປັນການນັບ ການຂະໜານນາມ ບັນຍັດ ຊື່ທີ່ຮຽກກັນ ນາມການຕັ້ງຊື່ ຊື່ທີ່ຕັ້ງໃຫ້ ພາສາ ພະຍັນຊະນະ ຊື່ຮຽກສະເພາະຂອງພຣະເຖຣະນັ້ນ ລວມຄວາມວ່າ ທ່ານປິງຄິຍະກ່າວ ຯລຯ ດັ່ງນີ້

ຄຳວ່າ ຊົງເຫັນແນວໃດ ກໍຕັດແນວນັ້ນ ອະທິບາຍວ່າ ຊົງເຫັນແນວໃດ ກໍຕັດ ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດແນວນັ້ນ ຊົງເຫັນແນວໃດວ່າ ສັງຂານທັງປວງບໍ່ທ່ຽງ ກໍຕັດ ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດແນວນັ້ນ ຊົງເຫັນແນວໃດວ່າ ສັງຂານທັງປວງເປັນທຸກ ຯລຯ ທຳທັງປວງເປັນອະນັດຕາ ຯລຯ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ກໍຕັດ ຄື ບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດແນວນັ້ນ ລວມຄວາມວ່າ ຊົງເຫັນແນວໃດ ກໍຕັດແນວນັ້ນ

ຄຳວ່າ ປາສະຈາກມົນທິນ ໃນຄຳວ່າ ຊົງປາສະຈາກມົນທິນ ມີພຣະປັນຍາເໝືອນພູຣິ ອະທິບາຍວ່າ ຣາຄະ ຊື່ວ່າມົນທິນ ໂທສະ ຊື່ວ່າມົນທິນ ໂມຫະ ຊື່ວ່າມົນທິນ ໂກທະ ຊື່ວ່າມົນທິນ ອຸປະນາຫະ ຊື່ວ່າມົນທິນ ຯລຯ ອະກຸສະລາພິສັງຂານທຸກປະເພດຊື່ວ່າມົນທິນ ມົນທິນເຫຼົ່ານັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າຊົງລະໄດ້ເດັດຂາດແລ້ວ ຕັດຮາກ ກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະພຸດທະເຈົ້າ ຈຶ່ງຊື່ວ່າບໍ່ມີມົນທິນ ປາສະຈາກມົນທິນ ຄື ບໍ່ມີມົນທິນ ກຳຈັດມົນທິນ ລະມົນທິນໄດ້ແລ້ວ ຫຼຸດພົ້ນມົນທິນ ກ້າວລ່ວງມົນທິນທັງປວງແລ້ວ

ແຜ່ນດິນຕັດຮຽກວ່າ ພູຣິ ພຣະຜູ້ມີພຣະພາກເຈົ້າຊົງປະກອບດ້ວຍປັນຍາ ອັນໄພບູນກວ້າງຂວາງ ແຜ່ໄປສະເໝີດ້ວຍແຜ່ນດິນນີ້

ປັນຍາຕັດຮຽກວ່າ ເມທາ (ປັນຍາເຄື່ອງທຳລາຍກິເລດ) ໄດ້ແກ່ ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມເລືອກເຟັ້ນທຳ ສຳມາທິດຖິ

ພຣະຜູ້ມີພຣະພາກເຈົ້າຊົງປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມເປັນໄປເປັນໄປພ້ອມ ພຽບພ້ອມດ້ວຍປັນຍາຊື່ວ່າເມທານີ້ ດັ່ງນັ້ນ ພຣະພຸດທະເຈົ້າ ຈຶ່ງຊື່ວ່າມີພຣະປັນຍາເໝືອນພູຣິ ລວມຄວາມວ່າ ຊົງປາສະຈາກມົນທິນ ມີພຣະປັນຍາເໝືອນພູຣິ

ຄຳວ່າ ຊົງປາສະຈາກກາມ ຊົງບໍ່ມີກິເລດດັ່ງປ່າ ຜູ້ເປັນນາຄະ ອະທິບາຍວ່າ

ຄຳວ່າ ກາມ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ ຯລຯ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ຯລຯ ເຫຼົ່ານີ້ ຮຽກວ່າ ກິເລດກາມ

ພຣະຜູ້ມີພຣະພາກພຸດທະເຈົ້າຊົງກຳນົດຮູ້ວັດຖຸກາມ ຊົງລະກິເລດກາມໄດ້ແລ້ວ ຍ້ອນເປັນຜູ້ກຳນົດຮູ້ວັດຖຸກາມ ຍ້ອນຊົງລະກິເລດກາມໄດ້ແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງບໍ່ຊົງຕ້ອງການໃນກາມ ຄື ບໍ່ຊົງຕ້ອງການ ບໍ່ປາຖະໜາ ບໍ່ມຸ້ງໝາຍ ບໍ່ມຸ້ງຫວັງໃນກາມ

ຊົນເຫຼົ່າໃດຕ້ອງການກາມ ຕ້ອງການ ປາຖະໜາ ມຸ້ງໝາຍ ມຸ້ງຫວັງກາມ ຊົນເຫຼົ່ານັ້ນຊື່ວ່າຍັງຕ້ອງການກາມ ກຳໜັດໃນຣາຄະ ມີຄວາມສຳຄັນໃນສັນຍາ

ພຣະຜູ້ມີພຣະພາກເຈົ້າບໍ່ຊົງຕ້ອງການໃນກາມ ບໍ່ຊົງຕ້ອງການ ບໍ່ປາຖະໜາ ບໍ່ມຸ້ງໝາຍບໍ່ມຸ້ງຫວັງໃນກາມ ດັ່ງນັ້ນ ພຣະພຸດທະເຈົ້າ ຈຶ່ງຊື່ວ່າບໍ່ມີກາມ ຄື ປາສະຈາກກາມ

ເປັນຜູ້ສະລະກາມແລ້ວ ຄາຍກາມແລ້ວ ປ່ອຍກາມແລ້ວ ລະກາມແລ້ວ ສະລັດຖິ້ມກາມແລ້ວ ຄາຍຣາຄະແລ້ວ ປາສະຈາກຣາຄະແລ້ວ ສະລະຣາຄະແລ້ວ ຄາຍຣາຄະແລ້ວ ປ່ອຍຣາຄະແລ້ວ ລະຣາຄະແລ້ວ ສະລັດຖິ້ມຣາຄະແລ້ວ ເປັນຜູ້ໝົດຄວາມຢາກ ດັບແລ້ວ ເຢັນແລ້ວ ມີຕົນອັນປະເສີດສະເຫວີຍສຸກຢູ່ ລວມຄວາມວ່າ ຊົງປາສະຈາກກາມ

ຄຳວ່າ ຊົງບໍ່ມີກິເລດດັ່ງປ່າ ອະທິບາຍວ່າ ຣາຄະ ຊື່ວ່າກິເລດດັ່ງປ່າ ໂທສະ ຊື່ວ່າກິເລດດັ່ງປ່າ ໂມຫະ ຊື່ວ່າກິເລດດັ່ງປ່າ ໂກທະ ຊື່ວ່າກິເລດດັ່ງປ່າ ອຸປະນາຫະ ຊື່ວ່າກິເລດດັ່ງປ່າ

ຯລຯ ອະກຸສະລາພິສັງຂານທຸກປະເພດ ຊື່ວ່າກິເລດດັ່ງປ່າ ກິເລດດັ່ງປ່າເຫຼົ່ານັ້ນ ພຣະຜູ້ມີພຣະພາກເຈົ້າຊົງລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າບໍ່ມີກິເລດດັ່ງປ່າ ປາສະຈາກກິເລດດັ່ງປ່າ ບໍ່ມີກິເລດ ດັ່ງປ່າ ຄື ບຳຣາດກິເລດດັ່ງປ່າ ຊົງລະກິເລດດັ່ງປ່າໄດ້ແລ້ວ ຫຼຸດພົ້ນກິເລດດັ່ງປ່າໄດ້ແລ້ວ ກ້າວລ່ວງກິເລດດັ່ງປ່າທັງປວງແລ້ວ ລວມຄວາມວ່າ ຊົງບໍ່ມີກິເລດດັ່ງປ່າ

ຄຳວ່າ ຜູ້ເປັນນາຄະ ອະທິບາຍວ່າ ຜູ້ເປັນນາຄະ ຄື ພຣະຜູ້ມີພຣະພາກເຈົ້າຊື່ວ່ານາຄະ ຍ້ອນບໍ່ຊົງທຳຄວາມຊົ່ວ ພຣະຜູ້ມີພຣະພາກເຈົ້າຊື່ວ່າ ນາຄະ ຍ້ອນບໍ່ຊົງເຖິງ ພຣະຜູ້ມີພຣະພາກເຈົ້າຊື່ວ່າ ນາຄະ ຍ້ອນບໍ່ຊົງກັບມາຫາ ຯລຯ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຊື່ວ່ານາຄະ ຍ້ອນບໍ່ຊົງກັບມາຫາ ເປັນແນວນີ້ ລວມຄວາມວ່າ ຊົງປາສະຈາກກາມ ຊົງບໍ່ມີກິເລດດັ່ງປ່າ ຜູ້ເປັນນາຄະ

ຄຳວ່າ ຍ້ອນເຫດແຫ່ງອັນໃດນໍ ໃນຄຳວ່າ ຈະເພິ່ງກ່າວຄຳຕົວະຍ້ອນເຫດແຫ່ງອັນໃດນໍ ອະທິບາຍວ່າ ຍ້ອນເຫດແຫ່ງອັນໃດ ຄື ຍ້ອນເຫດອັນໃດ ຍ້ອນການອັນໃດ ຍ້ອນຕົ້ນເຫດອັນໃດ ຍ້ອນປັດໄຈອັນໃດ ລວມຄວາມວ່າ ຍ້ອນເຫດແຫ່ງອັນໃດນໍ

ຄຳວ່າ ຈະເພິ່ງກ່າວຄຳຕົວະ ໄດ້ແກ່ ຈະເພິ່ງກ່າວ ຄື ເວົ້າ ສະແດງ ຊີ້ແຈ່ງຄຳຕົວະ

## ວ່າດ້ວຍມຸສາວາດ

ຄຳວ່າ ຈະເພິ່ງກ່າວຄຳຕົວະ ອະທິບາຍວ່າ ບຸກຄົນເວົ້າຄຳຕົວະ ຄື ເວົ້າມຸສາວາດ ເວົ້າເລື່ອງບໍ່ຈິງ ຄົນບາງຄົນໃນໂລກນີ້ ຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງໝູ່ຍາດພີ່ນ້ອງ ຢູ່ທ່າມກາງໝູ່ທະຫານ ຫຼື ຢູ່ທ່າມກາງລາດຊະສຳນັກ ຖືກເຂົາອ້າງເປັນພະຍານຊັກຖາມວ່າ ທ່ານຮູ້ສິ່ງໃດ ຈົ່ງກ່າວສິ່ງນັ້ນ ບຸກຄົນນັ້ນບໍ່ຮູ້ກໍເວົ້າວ່າ ຮູ້ ຮູ້ກໍເວົ້າວ່າ ບໍ່ຮູ້ ບໍ່ເຫັນກໍເວົ້າວ່າ ເຫັນ ຫຼື ເຫັນກໍເວົ້າວ່າ ບໍ່ເຫັນ ເວົ້າຕົວະທັງທີ່ຮູ້ ຍ້ອນຕົນເປັນເຫດແດ່ ຍ້ອນບຸກຄົນອື່ນເປັນເຫດແດ່ ຫຼື ຍ້ອນເຫດຄືເຫັນແກ່ອາມິດເລັກໜ້ອຍແດ່ ດ້ວຍປະການແນວນີ້ ນີ້ຕັດຮຽກວ່າ ຄວາມເປັນຄົນເວົ້າຕົວະ

ອີກໄນໜຶ່ງ ມຸສາວາດ ມີໄດ້ດ້ວຍອາການ ໓ ຢ່າງ ຄື

໑. ກ່ອນເວົ້າທ່ານກໍຮູ້ວ່າ ເຮົາຈັກເວົ້າຕົວະ
໒. ກຳລັງເວົ້າກໍຮູ້ວ່າ ເຮົາກຳລັງເວົ້າຕົວະ
໓. ເວົ້າແລ້ວກໍຮູ້ວ່າ ເຮົາເວົ້າຕົວະແລ້ວ

ມຸສາວາດມີໄດ້ດ້ວຍອາການ ໓ ຢ່າງເຫຼົ່ານີ້

ອີກໄນໜຶ່ງ ມຸສາວາດມີໄດ້ດ້ວຍອາການ ໔ ຢ່າງ ຄື

໑. ກ່ອນເວົ້າທ່ານກໍຮູ້ວ່າ ເຮົາຈັກເວົ້າຕົວະ ຯລຯ

ອີກໄນໜຶ່ງ ມຸສາວາດ ມີໄດ້ດ້ວຍອາການ ໕ ຢ່າງ ຯລຯ ດ້ວຍອາການ ໖ ຢ່າງ ຯລຯ ດ້ວຍອາການ ໗ ຢ່າງ ຯລຯ

ມຸສາວາດມີໄດ້ດ້ວຍອາການ ໘ ຢ່າງ ຄື

໑. ກ່ອນເວົ້າທ່ານກໍຮູ້ວ່າ ເຮົາຈັກເວົ້າຕົວະ
໒. ກໍາລັງເວົ້າກໍຮູ້ວ່າ ເຮົາກໍາລັງເວົ້າຕົວະ
໓. ເວົ້າແລ້ວກໍຮູ້ວ່າ ເຮົາເວົ້າຕົວະແລ້ວ
໔. ປິດບັງທິດຖິ
໕. ປິດບັງຄວາມພໍໃຈ
໖. ປິດບັງຄວາມຖືກໃຈ
໗. ປິດບັງຄວາມສໍາຄັນ
໘. ປິດບັງຄວາມຈິງ ຯລຯ

ມຸສາວາດມີໄດ້ດ້ວຍອາການ ໘ ຢ່າງເຫຼົ່ານີ້ ຍ້ອນເຫດອັນໃດ ຄົນຈຶ່ງກ່າວຄໍາມຸສາ ຄື ເວົ້າ ສະແດງ ຊີ້ແຈ່ງຄໍາມຸສາ ລວມຄວາມວ່າ ຈະເພິ່ງກ່າວຄໍາຕົວະຍ້ອນເຫດແຫ່ງອັນໃດບໍ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງກ່າວວ່າ

(ພຣະປິງຄິຍະເຖຣະກ່າວແກ່ພາມພາວະຣີທ່າມກາງຊຸມຊົນ ດັ່ງນີ້)

ອາດຕະມາພາບຈັກກ່າວບົດຂັບທີ່ເປັນເຫດໃຫ້ເຖິງຝັ່ງ
ຕາມທີ່ພຣະຜູ້ພຣະພາກເຈົ້າຕັດໄວ້
ພຣະຜູ້ມີພຣະພາກເຈົ້າຊຶ່ງເປັນຜູ້ປາສະຈາກມົນທິນ
ມີພຣະປັນຍາເໝືອນພູຣີ ປາສະຈາກກາມ
ຊຶ່ງ ບໍ່ມີກິເລດດັ່ງປ່າ ຜູ້ເປັນນາຄະ
ຊຶ່ງເຫັນແນວໃດ ກໍຕັດແນວນັ້ນ
ຈະເພິ່ງກ່າວຄໍາຕົວະຍ້ອນເຫດແຫ່ງອັນໃດບໍ

[໑໐໓] (ພຣະປິງຄິຍະເຖຣະກ່າວວ່າ)

ອາດຕະມາພາບຈັກກ່າວຄໍາເວົ້າ
ທີ່ປະກອບດ້ວຍການສັນເສີນພຣະຜູ້ມີພຣະພາກເຈົ້າ
ຜູ້ຊຶ່ງລະມົນທິນແລະໂມຫະໄດ້ແລ້ວ
ຜູ້ຊຶ່ງລະຄວາມຖືຕົວແລະຄວາມລົບຫຼູ່ໄດ້ ໃນບັດນີ້ (໒)

ຄຳວ່າ ຜູ້ຊົງລະມົນທິນແລະໂມຫະໄດ້ແລ້ວ ອະທິບາຍວ່າ

ຄຳວ່າ ມົນທິນ ອະທິບາຍວ່າ ຣາຄະ ຊື່ວ່າມົນທິນ ໂທສະ ຊື່ວ່າມົນທິນ ໂມຫະ ຊື່ວ່າມົນທິນ ມານະ ຊື່ວ່າມົນທິນ ທິດຖິ ຊື່ວ່າມົນທິນ ກິເລດ ຊື່ວ່າມົນທິນ ທຸດຈະຣິດທຸກຢ່າງແລະກຳທີ່ນຳໄປສູ່ພົບທັງປວງ ຊື່ວ່າມົນທິນ

ຄຳວ່າ ໂມຫະ ອະທິບາຍວ່າ ຄວາມບໍ່ຮູ້ໃນທຸກ ຯລຯ ອະວິດຊາເປັນເໝືອນຫຼົ້ມສະລັກອະກຸສົນມູນ ຄື ໂມຫະ ນີ້ທ່ານຮຽກວ່າ ໂມຫະ ມົນທິນແລະໂມຫະ ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງລະໄດ້ເດັດຂາດແລ້ວ ຕັດຣາກ ກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຣາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະພຸດທະເຈົ້າ ຈຶ່ງຊື່ວ່າຜູ້ຊົງລະມົນທິນແລະໂມຫະໄດ້ແລ້ວ ລວມຄວາມວ່າ ຜູ້ຊົງລະມົນທິນ ແລະໂມຫະ ໄດ້ແລ້ວ

ຄຳວ່າ ຊົງລະຄວາມຖືຕົວ ແລະຄວາມລົບຫຼູ່ໄດ້ ອະທິບາຍວ່າ

## ວ່າດ້ວຍຄວາມຖືຕົວມີໄນຕ່າງ ໆ

ຄຳວ່າ ຄວາມຖືຕົວ ອະທິບາຍວ່າ ຄວາມຖືຕົວໄນດຽວ ຄື ຄວາມທີ່ຈິດໃຝ່ສູງ

ຄວາມຖືຕົວ ໒ ໄນ ຄື

໑. ການຍົກຕົນ ໒. ການຂົ່ມຜູ້ອື່ນ

ຄວາມຖືຕົວ ໓ ໄນ ຄື

໑. ຄວາມຖືຕົວວ່າ ເຮົາເລີດກວ່າເຂົາ
໒. ຄວາມຖືຕົວວ່າ ເຮົາສະເໝີເຂົາ
໓. ຄວາມຖືຕົວວ່າ ເຮົາດ້ອຍກວ່າເຂົາ

ຄວາມຖືຕົວ ໔ ໄນ ຄື

໑. ເກີດຄວາມຖືຕົວຍ້ອນ ລາບ
໒. ເກີດຄວາມຖືຕົວຍ້ອນ ຍົດ
໓. ເກີດຄວາມຖືຕົວຍ້ອນ ຄວາມສັນເສີນ
໔. ເກີດຄວາມຖືຕົວຍ້ອນ ຄວາມສຸກ

ຄວາມຖືຕົວ ໕ ໄນ ຄື

໑. ເກີດຄວາມຖືຕົວວ່າເຮົາໄດ້ ຮູບທີ່ຖືກໃຈ

໒. ຄວາມຖືຕົວວ່າເຮົາໄດ້ ສຽງທີ່ຖືກໃຈ
໓. ຄວາມຖືຕົວວ່າເຮົາໄດ້ ກິ່ນທີ່ຖືກໃຈ
໔. ຄວາມຖືຕົວວ່າເຮົາໄດ້ ຣົດທີ່ຖືກໃຈ
໕. ຄວາມຖືຕົວວ່າເຮົາໄດ້ ໂຜດຖັບພະທີ່ຖືກໃຈ

ຄວາມຖືຕົວ ໖ ໄນ ຄື

໑. ເກີດຄວາມຖືຕົວຍ້ອນມີ ຕາສົມບູນ
໒. ເກີດຄວາມຖືຕົວຍ້ອນມີ ຫູສົມບູນ
໓. ເກີດຄວາມຖືຕົວຍ້ອນມີ ດັງສົມບູນ
໔. ເກີດຄວາມຖືຕົວຍ້ອນມີ ລີ້ນສົມບູນ
໕. ເກີດຄວາມຖືຕົວຍ້ອນມີ ກາຍສົມບູນ
໖. ເກີດຄວາມຖືຕົວຍ້ອນມີ ໃຈສົມບູນ

ຄວາມຖືຕົວ ໗ ໄນ ຄື

໑. ຄວາມຖືຕົວ
໒. ຄວາມດູໝິ່ນ
໓. ຄວາມດູໝິ່ນດ້ວຍອຳນາດຄວາມຖືຕົວ
໔. ຄວາມຖືຕົວວ່າດ້ອຍກວ່າເຂົາ
໕. ຄວາມຖືຕົວວ່າຕ່ຳກວ່າເຂົາ
໖. ຄວາມຖືເຮົາຖືເຂົາ
໗. ຄວາມຖືຕົວຜິດ ໆ

ຄວາມຖືຕົວ ໘ ໄນ ຄື

໑. ເກີດຄວາມຖືຕົວຍ້ອນໄດ້ລາບ
໒. ເກີດຄວາມຖືຕົວວ່າຕົກຕ່ຳຍ້ອນເສື່ອມລາບ
໓. ເກີດຄວາມຖືຕົວຍ້ອນມີຍົດ
໔. ເກີດຄວາມຖືຕົວວ່າຕົກຕ່ຳຍ້ອນເສື່ອມຍົດ
໕. ເກີດຄວາມຖືຕົວຍ້ອນຄວາມສັນເສີນ
໖. ເກີດຄວາມຖືຕົວວ່າຕົກຕ່ຳຍ້ອນຖືກນິນທາ
໗. ເກີດຄວາມຖືຕົວຍ້ອນຄວາມສຸກ
໘. ເກີດຄວາມຖືຕົວວ່າຕົກຕ່ຳຍ້ອນຄວາມທຸກ

ຄວາມຖືຕົວ ໙ ໄນ ຄື

໑. ເປັນຜູ້ເລີດກວ່າເຂົາຖືຕົວວ່າ ເລີດກວ່າເຂົາ
໒. ເປັນຜູ້ເລີດກວ່າເຂົາຖືຕົວວ່າ ສະເໝີເຂົາ
໓. ເປັນຜູ້ເລີດກວ່າເຂົາຖືຕົວວ່າ ດ້ອຍກວ່າເຂົາ
໔. ເປັນຜູ້ສະເໝີເຂົາຖືຕົວວ່າ ເລີດກວ່າເຂົາ
໕. ເປັນຜູ້ສະເໝີເຂົາຖືຕົວວ່າ ສະເໝີເຂົາ
໖. ເປັນຜູ້ສະເໝີເຂົາຖືຕົວວ່າ ດ້ອຍກວ່າເຂົາ
໗. ເປັນຜູ້ດ້ອຍກວ່າເຂົາຖືຕົວວ່າ ເລີດກວ່າເຂົາ
໘. ເປັນຜູ້ດ້ອຍກວ່າເຂົາຖືຕົວວ່າ ສະເໝີເຂົາ
໙. ເປັນຜູ້ດ້ອຍກວ່າເຂົາຖືຕົວວ່າ ດ້ອຍກວ່າເຂົາ

ຄວາມຖືຕົວ ໑໐ ໄນ ຄື ຄົນບາງຄົນໃນໂລກນີ້

໑. ເກີດຄວາມຖືຕົວຍ້ອນຊາດ
໒. ເກີດຄວາມຖືຕົວຍ້ອນໂຄດ
໓. ເກີດຄວາມຖືຕົວຍ້ອນເປັນບຸດຂອງຜູ້ມີຕະກູນ
໔. ເກີດຄວາມຖືຕົວຍ້ອນເປັນຜູ້ມີຮູບງາມ
໕. ເກີດຄວາມຖືຕົວຍ້ອນມີຊັບ
໖. ເກີດຄວາມຖືຕົວຍ້ອນການສຶກສາ
໗. ເກີດຄວາມຖືຕົວຍ້ອນໜ້າທີ່ວຽກງານ
໘. ເກີດຄວາມຖືຕົວຍ້ອນມີຫຼັກແຫ່ງສິລະປະວິທະຍາ
໙. ເກີດຄວາມຖືຕົວຍ້ອນວິທະຍະຖານະ
໑໐. ເກີດຄວາມຖືຕົວຍ້ອນຄວາມຄົງແກ່ຮຽນ ເກີດຄວາມຖືຕົວຍ້ອນປະຕິພານ ຫຼືເກີດຄວາມຖືຕົວຍ້ອນສິ່ງອື່ນນອກຈາກທີ່ກ່າວແລ້ວ

ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງເຫັນປານນີ້ ນີ້ຕັດຮຽກວ່າ ຄວາມຖືຕົວ

ຄຳວ່າ ຄວາມລົບຫຼູ່ ໄດ້ແກ່ ຄວາມລົບຫຼູ່ ກິຣິຍາທີ່ລົບຫຼູ່ ພາວະທີ່ລົບຫຼູ່ ຄວາມແຂງກະດ້າງ ກຳຄືຄວາມແຂງກະດ້າງ ນີ້ຮຽກວ່າ ຄວາມລົບຫຼູ່

ຄວາມຖືຕົວ ແລະຄວາມລົບຫຼູ່ ພຣະຜູ້ມີພຣະພາກພຸດທະເຈົ້າຊົງລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ

ເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະພຸດທະເຈົ້າ ຈຶ່ງຊື່ວ່າຊົງລະຄວາມຖືຕົວແລະຄວາມລົບຫຼູ່ ລວມຄວາມວ່າ ຊົງລະຄວາມຖືຕົວແລະຄວາມລົບຫຼູ່ໄດ້

ຄໍາວ່າ ໃນບັດນີ້ ໃນຄໍາວ່າ ອາດຕະມາພາບຈັກກ່າວຄໍາເວົ້າ ທີ່ປະກອບດ້ວຍການສັນເສີນຯລຯ ໃນບັດນີ້ ເປັນບົດສົນທິ ເປັນຄໍາເຊື່ອມບົດ ເປັນຄໍາທີ່ເຮັດບົດໃຫ້ບໍລິບູນ ເປັນຄວາມສໍາພັນແຫ່ງອັກສອນ ເປັນຄວາມສະຫຼະສະຫຼວຍແຫ່ງພະຍັນຊະນະ ຄໍາວ່າ ໃນບັດນີ້ ເປັນຄໍາເຊື່ອມບົດໜ້າກັບບົດຫຼັງເຂົ້ານໍາກັນ

ຄໍາວ່າ ຂ້າພຣະອົງຈັກກ່າວຄໍາເວົ້າທີ່ປະກອບດ້ວຍການສັນເສີນ ອະທິບາຍວ່າ ອາດຕະມາພາບຈັກກ່າວ ຄື ສະແດງ ບັນຍັດ ກໍານົດ ເປີດເຜີຍ ຈໍາແນກ ເຮັດໃຫ້ງ່າຍ ປະກາດຄໍາເວົ້າ ຄື ວາຈາ ຄໍາທີ່ເປັນແນວທາງ ການເປ່ງວາຈາທີ່ປະກອບ ປະກອບພ້ອມ ດໍາເນີນໄປ ດໍາເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍການ ສັນເສີນ ລວມຄວາມວ່າ ຂ້າພຣະອົງຈັກກ່າວຄໍາເວົ້າທີ່ປະກອບດ້ວຍການສັນເສີນ ໃນບັດນີ້ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງກ່າວວ່າ

ອາດຕະມາພາບຈັກກ່າວຄໍາເວົ້າ
ທີ່ປະກອບດ້ວຍການສັນເສີນພຣະຜູ້ມີພຣະພາກເຈົ້າ
ຜູ້ຊົງລະມົນທິນແລະໂມຫະໄດ້ແລ້ວ
ຜູ້ຊົງລະຄວາມຖືຕົວແລະຄວາມລົບຫຼູ່ໄດ້ ໃນບັດນີ້

[໑໐໔] (ພຣະປິງຄິຍະເຖຣະກ່າວວ່າ)

ທ່ານພາມມະນາຈານ ພຣະຜູ້ມີພຣະພາກພຸດທະເຈົ້າ
ຊົງເປັນຜູ້ກໍາຈັດຄວາມມືດ ມີສະມັນຕະຈັກຂຸ
ຊົງເຖິງບ່ອນສຸດໂລກ ຊົງລ່ວງພົບໄດ້ທັງໝົດ
ບໍ່ມີອາສະວະ ຊົງລະທຸກທັງປວງໄດ້ແລ້ວ
ຊົງມີຊື່ຕາມຄວາມຈິງ ອາດຕະມາພາບໄດ້ເຂົ້າເຝົ້າມາແລ້ວ (໓)

ຄໍາວ່າ ຊົງເປັນຜູ້ກໍາຈັດຄວາມມືດ ໃນຄໍາວ່າ ພຣະພຸດທະເຈົ້າຊົງເປັນຜູ້ກໍາຈັດຄວາມມືດມີສະມັນຕະຈັກຂຸ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊົງກໍາຈັດ ຄື ເຮັດໃຫ້ເບົາບາງ ລຸດ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຄວາມມືດຍ້ອນຣາຄະ ຄວາມມືດຍ້ອນໂທສະຄວາມມືດຍ້ອນໂມຫະ ຄວາມມືດຍ້ອນມານະ ຄວາມມືດຍ້ອນທິດຖິ ຄວາມມືດຍ້ອນກິເລດຄວາມມືດຍ້ອນທຸດຈະຣິດ ເຊິ່ງເຮັດໃຫ້ເປັນຄົນຕາບອດ ເຮັດໃຫ້ບໍ່ມີຈັກຂຸ ເຮັດໃຫ້ບໍ່ມີຍານອັນດັບປັນຍາ ເປັນໄປໃນຝ່າຍແຫ່ງຄວາມລໍາບາກ ບໍ່ເປັນໄປເພື່ອນິບພານ ລວມຄວາມວ່າ ຊົງເປັນຜູ້ກໍາຈັດຄວາມມືດ

ຄຳວ່າ ພຣະພຸດທະເຈົ້າ ໄດ້ແກ່ ພຣະຜູ້ມີພຣະພາກເຈົ້າ ຯລຯ ຄຳວ່າ ພຣະພຸດທະເຈົ້າ ນີ້ ເປັນສັດສິກາບັນຍັດ

ຄຳວ່າ ມີສະມັນຕະຈັກຂຸ ອະທິບາຍວ່າ ພຣະສັບພັນຍຸຕະຍານ ຕັດຮຽກວ່າ ສະມັນຕະຈັກຂຸ ຯລຯ ພຣະຕະຖາຄົດ ຊື່ວ່າມີສະມັນຕະຈັກຂຸ ດ້ວຍຈັກຂຸນັ້ນ ລວມຄວາມວ່າ ພຣະພຸດທະເຈົ້າຊົງເປັນຜູ້ກຳຈັດຄວາມມືດ ມີສະມັນຕະຈັກຂຸ

ຄຳວ່າ ຊົງເຖິງບ່ອນສຸດໂລກ ຊົງລ່ວງພົບໄດ້ທັງໝົດ ອະທິບາຍວ່າ

ຄຳວ່າ ໂລກ ອະທິບາຍວ່າ ໂລກ ໑ ຄື ພະວະໂລກ

ໂລກ ໒ ຄື ພະວະໂລກທີ່ເປັນສົມບັດ ແລະພະວະໂລກທີ່ເປັນວິບັດ

ໂລກ ໓ ຄື ເວທະນາ ໓

ໂລກ ໔ ຄື ອາຫານ ໔

ໂລກ ໕ ຄື ອຸປາທານຂັນ ໕

ໂລກ ໖ ຄື ອາຍະຕະນະພາຍໃນ ໖

ໂລກ ໗ ຄື ວິນຍານັດຖິຕິ ໗

ໂລກ ໘ ຄື ໂລກກະທຳ ໘

ໂລກ ໙ ຄື ສັດຕາວາດ ໙

ໂລກ ໑໐ ຄື ອາຍະຕະນະ ໑໐

ໂລກ ໑໑ ຄື ກາມະພົບ ໑໑

ໂລກ ໑໒ ຄື ອາຍະຕະນະ ໑໒

ໂລກ ໑໘ ຄື ທາດ ໑໘

ຄຳວ່າ ຊົງເຖິງບ່ອນສຸດໂລກ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊົງເຖິງບ່ອນສຸດ ຊົງບັນລຸບ່ອນສຸດ ຊົງເຖິງສ່ວນສຸດ ຊົງບັນລຸສ່ວນສຸດ ຯລຯ ຊົງເຖິງບ່ອນດັບ ຊົງບັນລຸບ່ອນດັບແຫ່ງໂລກ ພຣະອົງຊົງຢູ່ໃນ (ອະຣິຍະວາສະທຳ) ແລ້ວ ຊົງປະພຶດຈະຣະນະທຳແລ້ວ ຯລຯ ພຣະອົງ ບໍ່ມີການວຽນເກີດ ວຽນຕາຍ ແລະພົບໃໝ່ກໍບໍ່ມີອີກ ລວມຄວາມວ່າ ຊົງເຖິງບ່ອນສຸດໂລກ

ຄຳວ່າ ຊົງລ່ວງພົບໄດ້ທັງໝົດ ອະທິບາຍວ່າ

ຄຳວ່າ ພົບ ໄດ້ແກ່ ພົບ ໒ ຄື (໑) ກຳພົບ (໒) ພົບໃໝ່ອັນມີໃນປະຕິສົນທິ

ກຳພົບ ເປັນແນວໃດ?

ຄື ປຸນຍາພິສັງຂານ ອະປຸນຍາພິສັງຂານ ອາເນນຊາພິສັງຂານ ນີ້ຊື່ວ່າກຳພົບ

ພົບໃໝ່ອັນມີໃນປະຕິສົນທິ ເປັນແນວໃດ?

ຄື ຮູບ ເວທະນາ ສັນຍາ ສັງຂານ ວິນຍານ ອັນມີໃນປະຕິສົນທິ ນີ້ຊື່ວ່າພົບໃໝ່ ອັນມີໃນປະຕິສົນທິ

ພຣະຜູ້ມີພຣະພາກເຈົ້າຊົງລ່ວງ ຄື ຊົງກ້າວລ່ວງ ຊົງລ່ວງເລີຍກຳພົບ ແລະພົບໃໝ່ອັນມີໃນປະຕິສົນທິແລ້ວ ລວມຄວາມວ່າ ຊົງເຖິງບ່ອນສຸດໂລກ ຊົງລ່ວງພົບໄດ້ທັງໝົດ

ຄຳວ່າ ບໍ່ມີອາສະວະ ໃນຄຳວ່າ ບໍ່ມີອາສະວະ ຊົງລະທຸກທັງປວງໄດ້ແລ້ວ ໄດ້ແກ່ ອາສະວະ ໔ ຄື

| | |
|---|---|
| ໑. ກາມາສະວະ | ໒. ພະວາສະວະ |
| ໓. ທິດຖາສະວະ | ໔. ອະວິດຊາສະວະ |

ອາສະວະເຫຼົ່ານັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າຊົງລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນ ຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະພຸດທະເຈົ້າ ຈຶ່ງຊື່ວ່າບໍ່ມີອາສະວະ

ຄຳວ່າ ຊົງລະທຸກທັງປວງໄດ້ແລ້ວ ອະທິບາຍວ່າ ຊາດທຸກ ຊະຣາທຸກ ພະຍາທິທຸກ ມໍຣະນະທຸກ ໂສກະ ປະຣິເທວະ ທຸກຂະ ໂທມະນັດ ອຸປາຍາດທຸກ ຯລຯ ທຸກຍ້ອນທິດຖິວິບັດ ອັນມີໃນປະຕິສົນທິທັງປວງ ພຣະພຸດທະເຈົ້າພຣະອົງນັ້ນ ຊົງລະໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ດັ່ງນັ້ນ ພຣະພຸດທະເຈົ້າ ຈຶ່ງຊື່ວ່າຊົງລະທຸກທັງປວງໄດ້ແລ້ວ ລວມຄວາມວ່າ ບໍ່ມີອາສະວະ ຊົງລະທຸກທັງປວງໄດ້ແລ້ວ

ຄຳວ່າ ຊົງມີຊື່ຕາມຄວາມຈິງ ໃນຄຳວ່າ ທ່ານພາມມະນາຈານ ຯລຯ ຊົງມີຊື່ຕາມຄວາມຈິງອາດຕະມາພາບໄດ້ເຂົ້າເຝົ້າມາແລ້ວ ອະທິບາຍວ່າ ຊົງມີຊື່ຕາມຄວາມຈິງ ຄື

ມີພຣະນາມເຊັ່ນດຽວກັນ ຊົງມີຊື່ທີ່ມີຄວາມໝາຍຢ່າງດຽວກັນ ມີພຣະນາມເຊັ່ນດຽວກັບຄວາມຈິງ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິຂີ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ເວດສະພູ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກະກຸສັນທະ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ໂກນາຄະມະນະ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກັດສະປະ ພຣະຜູ້ມີພຣະພາກພຸດທະເຈົ້າເຫຼົ່ານັ້ນ ມີພຣະນາມເຊັ່ນດຽວກັນ ຄື ຊົງມີຊື່ທີ່ມີຄວາມໝາຍຢ່າງດຽວກັນ ແມ່ນພຣະຜູ້ມີພຣະພາກສາກະຍະມຸນີ ກໍມີພຣະນາມເຊັ່ນດຽວກັນ ຄື ຊົງມີຊື່ ທີ່ມີຄວາມໝາຍຢ່າງດຽວກັນກັບພຣະຜູ້ມີພຣະພາກພຸດທະເຈົ້າເຫຼົ່ານັ້ນ ດັ່ງນັ້ນ ພຣະພຸດທະເຈົ້າ ຈຶ່ງຊື່ວ່າ ຊົງມີຊື່ຕາມຄວາມຈິງ

ຄຳວ່າ ທ່ານພາມມະນາຈານ ຯລຯ ອາດຕະມາພາບໄດ້ເຂົ້າເຝົ້າມາແລ້ວ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ອາດຕະມາພາບເຂົ້າໄປໃກ້ ໄດ້ເຂົ້າເຝົ້າມາແລ້ວ ຄື ເຂົ້າໄປ

ນັ່ງໃກ້ ໄດ້ທູນຖາມ ໄດ້ທູນຖາມບັນຫາແລ້ວ ລວມຄວາມວ່າ ທ່ານພາມມະນາຈານ ຯລຯ ອາດຕະມາພາບໄດ້ເຂົ້າເຝົ້າມາແລ້ວ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງກ່າວວ່າ

ທ່ານພາມມະນາຈານ ພຣະຜູ້ມີພຣະພາກພຸດທະເຈົ້າ
ຊົງເປັນຜູ້ກຳຈັດຄວາມມືດ ມີສະມັນຕະຈັກຂຸ
ຊົງເຖິງບ່ອນສຸດໂລກ ຊົງລ່ວງພົບໄດ້ທັງໝົດ
ບໍ່ມີອາສະວະ ຊົງລະທຸກທັງປວງໄດ້ແລ້ວ
ຊົງມີຊື່ຕາມຄວາມຈິງ ອາດຕະມາພາບໄດ້ເຂົ້າເຝົ້າມາແລ້ວ

[໑໐໕] (ພຣະປິງຄິຍະເຖຣະກ່າວວ່າ)

ທິຊະ (ນົກ) ເພິ່ງລະປ່ານ້ອຍແລ້ວມາອາໄສປ່າໃຫຍ່
ທີ່ມີໝາກໄມ້ຫຼາຍສັນໃດ ອາດຕະມາພາບກໍສັນນັ້ນ
ລະຄະນາຈານຜູ້ມີ ທັດສະນະແຄບ ໄປເຝົ້າພຣະຜູ້ມີພຣະພາກເຈົ້າ
ເໝືອນຫົງເວີ່ນລົງສູ່ສະໃຫຍ່ (໔)

ຄຳວ່າ ທິຊະ (ນົກ) ເພິ່ງລະປ່ານ້ອຍແລ້ວມາອາໄສປ່າໃຫຍ່ ທີ່ມີໝາກໄມ້ຫຼາຍສັນໃດ ອະທິບາຍວ່າ ນົກຮຽກວ່າ ທິຊະ ຍ້ອນເຫດໃດ ນົກຈຶ່ງຮຽກວ່າ ທິຊະ ທິຊະເກີດ ໒ ເທື່ອ ຄື ຈາກທ້ອງແມ່ ແລະຈາກໜ່ວຍໄຂ່ ຈຶ່ງຊື່ວ່າທິຊະ ຍ້ອນເຫດນັ້ນ ນົກຈຶ່ງຮຽກວ່າ ທິຊະ ດັ່ງນັ້ນຈຶ່ງຊື່ວ່າທິຊະ

ຄຳວ່າ ລະປ່ານ້ອຍແລ້ວ ຯລຯ ສັນໃດ ອະທິບາຍວ່າ ນົກລະຖິ້ມ ລ່ວງ ກ້າວລ່ວງ ລ່ວງເລີຍ ປ່ານ້ອຍ ຄື ປ່ານ້ອຍ ທີ່ມີໝາກໄມ້ໜ້ອຍ ມີອາຫານໜ້ອຍ ມີນ້ຳໜ້ອຍ ໄປເຖິງ ປະສົບ ໄດ້ປ່າ ຄື ປ່າທຶບໃຫຍ່ອື່ນ ທີ່ມີໝາກໄມ້ຫຼາຍ ມີອາຫານຫຼາຍ ມີນ້ຳຫຼາຍຢູ່ໃນປ່າທຶບນັ້ນ ສັນໃດ ລວມຄວາມວ່າ ທິຊະ (ນົກ) ເພິ່ງລະປ່ານ້ອຍແລ້ວມາອາໄສປ່າໃຫຍ່ ທີ່ມີໝາກໄມ້ຫຼາຍ ສັນໃດ

ຄຳວ່າ ສັນນັ້ນ ໃນຄຳວ່າ ອາດຕະມາພາບກໍສັນນັ້ນ ລະຄະນາຈານຜູ້ມີ ທັດສະນະແຄບ ໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເໝືອນຫົງເວີ່ນລົງສູ່ສະໃຫຍ່ ເປັນຄຳທີ່ເຮັດໃຫ້ການປຽບທຽບສົມບູນ

ຄຳວ່າ ລະຄະນາຈານຜູ້ມີ ທັດສະນະແຄບ ອະທິບາຍວ່າ ພາມພາວະຣີ ແລະ ພາມເຫຼົ່າອື່ນ ທີ່ເປັນອາຈານຂອງພາມພາວະຣີນັ້ນ ປຽບທຽບກັບພຣະຜູ້ມີພຣະພາກພຸດທະເຈົ້າແລ້ວ ຊື່ວ່າມີ ທັດສະນະແຄບ ຄື ມີ ທັດສະນະຕ່ຳຕ້ອຍ ມີ ທັດສະນະບໍ່ກວ້າງ ມີ ທັດສະນະຕ່ຳຊາມ ມີທັດສະນະໜ້າຣັງກຽດ ຫຼື ມີ ທັດສະນະຫຍາບ ອາດຕະມາພາບ ລະຖິ້ມ ລ່ວງ ກ້າວລ່ວງ ລ່ວງ

ເລີຍພາມເຫຼົ່ານັ້ນ ເຊິ່ງມີທັດສະນະແຄບ ຄື ມີ ທັດສະນະຕ່ຳຕ້ອຍ ມີ ທັດສະນະບໍ່ກວ້າງ ມີ ທັດສະນະຕ່ຳຊາມ ມີ ທັດສະນະໜ້າຮັງກຽດ ມີ ທັດສະນະຫຍາບ

ມາພົບ ຄື ປະສົບ ໄດ້ສະເພາະພຣະຜູ້ມີພຣະພາກພຸດທະເຈົ້າ ຜູ້ມີທັດສະນະຫາປະມານບໍ່ໄດ້ ມີ ທັດສະນະເລີດ ທັດສະນະປະເສີດສຸດ ທັດສະນະວິເສດສຸດ ທັດສະນະຊັ້ນແນວໜ້າ ທັດສະນະສູງສຸດ ທັດສະນະປະເສີດ ບໍ່ມີໃຜສະເໝີ ບໍ່ມີໃຜສະເໝີເໝືອນ ບໍ່ມີໃຜປຽບທຽບໄດ້ ບໍ່ມີໃຜທຽບທຽມໄດ້ ບໍ່ມີບຸກຄົນຜູ້ມີສ່ວນປຽບເໝືອນ ຊົງເປັນເທບຍິ່ງກວ່າເທບ ຊົງອົງອາດກວ່ານໍຣະຊົນ ຊົງເປັນບຸຣຸດ ເໝືອນຣາດຊະສີ ຊົງເປັນບຸຣຸດເໝືອນພະຍາຊ້າງ ຊົງເປັນບຸຣຸດອາຊາໄນ ຊົງເປັນບຸຣຸດແກ່ກ້າ ຊົງເປັນບຸຣຸດຮັບພາຣະ ມີພຣະທົດສະພະລະຍານ ຊົງໝັ້ນຄົງ ພະຍາຫົງເພິ່ງໄປເຖິງ ປະສົບ ໄດ້ສະເພາະສະໃຫຍ່ທີ່ມະນຸດສ້າງໄວ້ ສະອະໂນດາດ ຫຼື ມະຫາສະມຸດ ມີນ້ຳທີ່ບໍ່ກະເພື່ອມ ມີນ້ຳນັບປະມານບໍ່ໄດ້ ສັນໃດ

ອາດຕະມາພາບ ຄືປິງຄິຍະພາມ ກໍສັນນັ້ນ ໄດ້ພົບພຣະຜູ້ມີພຣະພາກພຸດທະເຈົ້າ ຜູ້ບໍ່ຫວັ່ນໄຫວ ມີພຣະເດດນັບບໍ່ຖ້ວນ ມີພຣະຍານແຕກສານ ມີພຣະຈັກຂຸຊັດແຈ້ງ ຊົງສະຫຼາດໃນປະເພດປັນຍາ ຊົງບັນລຸປະຕິສຳພິທາ ຊົງເຖິງຈະຕຸເວສາຣັດຊະຍານ ຊົງນ້ອມພຣະທະໄທໄປດ້ວຍສັດທາ ມີພຣະອົງຂາວຜ່ອງ ຕັດພຣະວາຈາບໍ່ເປັນສອງ ຊົງໝັ້ນຄົງ ຊົງມີປະຕິນຍາແນວນັ້ນ ບໍ່ແມ່ນເດັກນ້ອຍ ຊົງເປັນຜູ້ຍິ່ງໃຫຍ່ ຊົງເລິກເຊິ່ງ ມີພຣະຄຸນອັນປະມານບໍ່ໄດ້ ມີພຣະທຳອັນຫຍັ່ງເຖິງຍາກ ຊົງມີຣັດຕະນະທັງຫຼາຍ ມີພຣະຄຸນສະເໝີດ້ວຍສາຄອນ ຊົງປະກອບດ້ວຍອຸເປກຂາມີອົງ ໖ ມີພຣະຄຸນຊັ່ງບໍ່ໄດ້ ໄພບູນ ຫາປະມານບໍ່ໄດ້ ຕັດເຖິງມັກແກ່ຜູ້ທີ່ກ່າວເຖິງພຣະອົງເຊັ່ນນັ້ນ ເປັນພຣະຊິນນະເຈົ້າປະເສີດ ເໝືອນເຂົາພຣະສຸເມຣຸເລີດກວ່າຂຸນເຂົາ ເໝືອນຄຸດເລີດກວ່າພວກນົກ ເໝືອນຣາດຊະສີເລີດກວ່າໝູ່ສັດເໝືອນທະເລເລີດກວ່າຫ້ວງນ້ຳທັງຫຼາຍ ຄື ພຣະສາດສະດາພຣະອົງນັ້ນ ຜູ້ຊົງເປັນພຣະຊິນນະເຈົ້າປະເສີດ ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ລວມຄວາມວ່າ ອາດຕະມາພາບກໍສັນນັ້ນ ລະຄະນາຈານ ຜູ້ມີ ທັດສະນະແຄບ ໄປເຝົ້າພຣະຜູ້ມີພຣະພາກເຈົ້າເໝືອນຫົງເວີ່ນລົງສູ່ສະໃຫຍ່ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງກ່າວວ່າ

ທິຊະ (ນົກ) ເພິ່ງລະປ່ານ້ອຍແລ້ວມາອາໄສປ່າໃຫຍ່
ທີ່ມີໝາກໄມ້ຫຼາຍສັນໃດ ອາດຕະມາພາບກໍສັນນັ້ນ
ລະຄະນາຈານຜູ້ມີ ທັດສະນະແຄບ ໄປເຝົ້າພຣະຜູ້ພຣະພາກເຈົ້າ
ເໝືອນຫົງເວີ່ນລົງສູ່ສະໃຫຍ່

[໑໐໖] (ພຣະປິງຄິຍະເຖຣະກ່າວວ່າ)

ກ່ອນແຕ່ສາດສະໜາຂອງພຣະໂຄດົມ
ອາຈານເຈົ້າລັດທິເຫຼົ່າໃດເຄີຍພະຍາກອນແກ່ອາດຕະມາພາບວ່າ

ເຫດນີ້ໄດ້ເປັນມາແລ້ວແນວນີ້ ຈັກເປັນແນວນີ້
ຄຳພະຍາກອນທັງໝົດນັ້ນເປັນຄຳທີ່ເຊື່ອສືບຕໍ່ກັນມາ
ຄຳພະຍາກອນທັງໝົດນັ້ນມີແຕ່ຈະເຮັດໃຫ້ຄຶດນຶກໄປຕ່າງ ໆ (໕)

ຄຳວ່າ ເຫຼົ່າໃດ ໃນຄຳວ່າ ກ່ອນ ຯລຯ ອາຈານເຈົ້າລັດທິເຫຼົ່າໃດເຄີຍພະຍາກອນແກ່ອາດຕະມາພາບ ອະທິບາຍວ່າ ພາມພາວະຣີໃດ ແລະອາຈານຂອງພາມພາວະຣີເຫຼົ່າອື່ນໃດ ອາຈານເຫຼົ່ານັ້ນເຄີຍພະຍາກອນ ຄື ເຄີຍບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດຫຼັກການຂອງຕົນ ຄື ຄວາມຖືກໃຈ ຄວາມພໍໃຈ ລັດທິ ອັດທະຍາໄສ ຄວາມປະສົງຂອງຕົນ ລວມຄວາມວ່າ ກ່ອນ ຯລຯ ອາຈານເຈົ້າລັດທິເຫຼົ່າໃດເຄີຍພະຍາກອນແກ່ອາດຕະມາພາບ

ຄຳວ່າ ແຕ່ສາດສະໜາຂອງພຣະໂຄດົມ ອະທິບາຍວ່າ ແຕ່ສາດສະໜາຂອງພຣະໂຄດົມ ຄື ອື່ນຈາກສາດສະໜາຂອງພຣະໂຄດົມ ກ່ອນສາດສະໜາຂອງພຣະໂຄດົມ ກ່ອນກວ່າສາດສະໜາຂອງພຣະໂຄດົມ ໄດ້ແກ່ ກ່ອນກວ່າສາດສະໜາຂອງພຣະພຸດທະເຈົ້າ ສາດສະໜາຂອງພຣະຊິນນະເຈົ້າ ສາດສະໜາຂອງພຣະຕະຖາຄົດເຈົ້າ ສາດສະໜາຂອງພຣະອະຣະຫັນ ລວມຄວາມວ່າ ແຕ່ສາດສະໜາຂອງພຣະໂຄດົມ

ຄຳວ່າ ເຫດນີ້ໄດ້ເປັນມາແລ້ວແນວນີ້ ຈັກເປັນແນວນີ້ ອະທິບາຍວ່າ ເລົ່າກັນມາວ່າ ເຫດນີ້ໄດ້ເປັນມາແລ້ວແນວນີ້ ຈັກເປັນແນວນີ້ ລວມຄວາມວ່າ ເຫດນີ້ໄດ້ເປັນມາແລ້ວແນວນີ້ ຈັກເປັນແນວນີ້

ຄຳວ່າ ຄຳພະຍາກອນທັງໝົດນັ້ນເປັນຄຳທີ່ເຊື່ອສືບຕໍ່ກັນມາ ອະທິບາຍວ່າ ຄຳພະຍາກອນທັງໝົດນັ້ນເປັນຄຳທີ່ເຊື່ອສືບຕໍ່ກັນມາ ຄື ອາຈານເຫຼົ່ານັ້ນກ່າວທຳທີ່ຕົນບໍ່ຮູ້ດ້ວຍຕົນເອງ ທຳທີ່ບໍ່ໄດ້ປະຈັກແກ່ຕົນເອງ ໂດຍການເຊື່ອຜູ້ອື່ນວ່າ ທຳນີ້ເປັນ ດັ່ງນີ້ ໆ ໂດຍການເລົ່າລື ໂດຍການຖືສືບ ໆ ກັນມາ ໂດຍການອ້າງຕຳລາ ໂດຍຕັກກະ ໂດຍການອະນຸມານ ໂດຍການຄຶດຕອງຕາມແນວເຫດຜົນ ໂດຍເຂົ້າໄດ້ກັບທິດສະດີທີ່ຄຶດໄວ້ແລ້ວ ລວມຄວາມວ່າ ຄຳພະຍາກອນທັງໝົດນັ້ນເປັນຄຳທີ່ເຊື່ອສືບຕໍ່ກັນມາ

ຄຳວ່າ ຄຳພະຍາກອນທັງໝົດນັ້ນມີ ແຕ່ຈະເຮັດໃຫ້ນຶກໄປຕ່າງ ໆ ອະທິບາຍວ່າ

ຄຳພະຍາກອນທັງໝົດນັ້ນມີແຕ່ຈະເຮັດໃຫ້ນຶກໄປຕ່າງ ໆ ຄື ເຮັດໃຫ້ຄວາມວິຕົກຈະເລີນ ເຮັດໃຫ້ຄວາມດຳຣິຈະເລີນ ເຮັດໃຫ້ກາມວິຕົກຈະເລີນ ເຮັດໃຫ້ພະຍາບາດວິຕົກຈະເລີນ ເຮັດໃຫ້ວິຫິງສາວິຕົກຈະເລີນ ເຮັດໃຫ້ຄວາມວິຕົກເຖິງຍາດຈະເລີນ ເຮັດໃຫ້ຄວາມວິຕົກເຖິງຊົນນະບົດຈະເລີນ ເຮັດໃຫ້ຄວາມວິຕົກເຖິງຄວາມບໍ່ຕາຍຈະເລີນ ເຮັດໃຫ້ຄວາມວິຕົກທີ່ປະກອບດ້ວຍຄວາມອີດູຈະເລີນ ເຮັດໃຫ້ຄວາມວິຕົກທີ່ປະກອບດ້ວຍລາບສັກກາຣະແລະຄວາມສັນເສີນຈະເລີນ ເຮັດ

ໃຫ້ຄວາມວິຕົກທີ່ປະກອບ ດ້ວຍຄວາມປາຖະໜາບໍ່ໃຫ້ໃຜດູໝິ່ນຈະເລີນ ລວມຄວາມວ່າ ຄຳພະຍາກອນທັງໝົດນັ້ນມີແຕ່ ຈະເຮັດໃຫ້ນຶກໄປ ຕ່າງ ໆ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງກ່າວວ່າ

ກ່ອນແຕ່ ສາດສະໜາຂອງພຣະໂຄດົມ
ອາຈານເຈົ້າລັດທິເຫຼົ່າໃດເຄີຍພະຍາກອນແກ່ອາດຕະມາພາບວ່າ
ເຫດນີ້ໄດ້ເປັນມາແລ້ວແບບນີ້ ຈັກເປັນແບບນີ້
ຄຳພະຍາກອນທັງໝົດນັ້ນເປັນຄຳທີ່ເຊື່ອສືບຕໍ່ກັນມາ
ຄຳພະຍາກອນທັງໝົດນັ້ນມີແຕ່ຈະເຮັດໃຫ້ຄຶດນຶກໄປຕ່າງ ໆ

[໑໐໗] (ພຣະປິງຄິຍະເຖຣະກ່າວວ່າ)

ພຣະໂຄດົມຊົງເປັນເອກບຸຣຸດ
ປະທັບນັ່ງທຳລາຍຄວາມມືດຢູ່ ຊົງຮຸ່ງເຮືອງ ຊົງແຜ່ຣັດສະໝີ
ພຣະໂຄດົມຜູ້ມີພຣະຍານເໝືອນພູຣິ
ພຣະໂຄດົມຜູ້ມີພຣະປັນຍາເໝືອນພູຣິ (໘)

## ວ່າດ້ວຍພຣະພຸດທະເຈົ້າຊົງເປັນເອກບຸຣຸດ

ຄຳວ່າ ຊົງເປັນເອກບຸຣຸດ ໃນຄຳວ່າ ຊົງເປັນເອກບຸຣຸດປະທັບນັ່ງທຳລາຍຄວາມມືດຢູ່ ອະທິບາຍວ່າ

ພຣະຜູ້ມີພຣະພາກເຈົ້າຊື່ວ່າຊົງເປັນເອກບຸຣຸດ ຍ້ອນສ່ວນແຫ່ງການບັນພະຊາ

ຊື່ວ່າຊົງເປັນເອກບຸຣຸດ ຍ້ອນອະທິບາຍວ່າ ບໍ່ມີໝູ່
ຊື່ວ່າຊົງເປັນເອກບຸຣຸດ ຍ້ອນອະທິບາຍວ່າ ຊົງລະຕັນຫາໄດ້
ຊົງປາສະຈາກຣາຄະໂດຍບໍ່ເຫຼືອ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ
ຊົງປາສະຈາກໂທສະໂດຍບໍ່ເຫຼືອ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ
ຊົງປາສະຈາກໂມຫະໂດຍບໍ່ເຫຼືອ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ
ຊົງປາສະຈາກກິເລດໂດຍບໍ່ເຫຼືອ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ

ສະເດັດເຖິງທາງສາຍເອກແລ້ວ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ

ຕັດສະຣູ້ອະນຸດຕະຣະສຳມາສຳໂພທິຍານ ລຳພັງພຣະອົງດຽວ ຈຶ່ງຊື່ວ່າ ຊົງເປັນເອກບຸຣຸດ

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າ ຊົງເປັນເອກບຸຣຸດ ຍ້ອນສ່ວນແຫ່ງການບັນພະຊາ ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າຍັງຊົງໜຸ່ມແໜ້ນ ມີພຣະເກສາດຳສະນິດດີ ພຽບພ້ອມດ້ວຍຄວາມໜຸ່ມແໜ້ນໃນປະຖົມໄວ ເມື່ອພຣະຊະນົກແລະພຣະຊົນນີ ມີນ້ຳພຣະເນດນອງພຣະພັກຊົງກັນແສງຮ້ອງໄຫ້ ບໍ່ປາຖະໜາ (ໃຫ້ບວດ) ຊົງລະໝູ່ພຣະຍາດ ຊົງຕັດຄວາມກັງວົນໃນການຄອງເຮືອນ ຄວາມກັງວົນດ້ວຍພຣະໂອຣົດ ແລະພຣະມະເຫສີ ຄວາມກັງວົນດ້ວຍພຣະຍາດຄວາມກັງວົນດ້ວຍພຣະສະຫາຍ ແລະອຳມາດ ຄວາມກັງວົນດ້ວຍການສັ່ງສົມທຸກຢ່າງ ຊົງປົງພຣະເກສາ ແລະພຣະມັດສຸ ຊົງຄອງຜ້າກາສະວະ ສະເດັດອອກບວດຈາກພຣະຣາດຊະວັງເປັນບັນພະຊິດ ຊົງເຂົ້າເຖິງຄວາມເປັນຜູ້ບໍ່ມີຄວາມກັງວົນ ຊົງປະພຶດຢູ່ ປະທັບຢູ່ ຊົງປ່ຽນອິລິຍາບົດຊົງເປັນໄປ ຊົງຮັກສາພຣະຊົນຊີບ ຊົງດຳເນີນໄປ ຊົງຍັງຊີວິດໃຫ້ດຳເນີນໄປຕາມລຳພັງພຣະອົງດຽວ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງເປັນເອກບຸຣຸດ ຍ້ອນສ່ວນແຫ່ງການບັນພະຊາ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງເປັນເອກບຸຣຸດ ຍ້ອນອະທິບາຍວ່າ ບໍ່ມີເພື່ອນເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ບວດແລ້ວແນວນີ້ ຊົງໃຊ້ສອຍເສນາສະນະທີ່ເປັນປ່າທຶບ ແລະປ່າເລິ່ງອັນສະຫງັດ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນບ່ອນຫຼີບຫຼີກຕາມລຳພັງພຣະອົງດຽວ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ສະເດັດໄປພຣະອົງດຽວ ປະທັບຢືນ ພຣະອົງດຽວ ປະທັບນັ່ງພຣະອົງດຽວ ບັນທົມພຣະອົງດຽວ ສະເດັດເຂົ້າສູ່ໝູ່ບ້ານເພື່ອບິນທະບາດພຣະອົງດຽວ ສະເດັດໄປພຣະອົງດຽວ ສະເດັດກັບພຣະອົງດຽວ ປະທັບນັ່ງໃນບ່ອນລັບພຣະອົງດຽວ ຕັ້ງພຣະທະໄທຈົງກົມພຣະອົງດຽວ ຊົງປະພຶດ ປະທັບຢູ່ ຊົງປ່ຽນອິລິຍາບົດຊົງເປັນໄປ ຊົງຮັກສາພຣະຊົນຊີບ ຊົງດຳເນີນໄປ ຊົງຍັງຊີວິດໃຫ້ດຳເນີນໄປລຳພັງພຣະອົງດຽວ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງເປັນເອກບຸຣຸດ ຍ້ອນອະທິບາຍວ່າ ບໍ່ມີພື່ອນເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງເປັນເອກບຸຣຸດ ຍ້ອນອະທິບາຍວ່າ ຊົງລະຕັນຫາໄດ້ເປັນແນວໃດ?

ຄື ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງເປັນເອກບຸຣຸດ ບໍ່ຊົງມີໃຜເໜືອກວ່າ ແນວນີ້ ບໍ່ຊົງຜະໝາດ ຊົງມີຄວາມພຽນ ຕັ້ງພຣະທະໄທເດັດດ່ຽວຢູ່ ຊົງຕັ້ງຄວາມພຽນຄັ້ງໃຫຍ່ຢູ່ເຫງົ້າຕົ້ນໂພ ໃກ້ຝັ່ງແມ່ນ້ຳເນຣັນຊະຣາ ຊົງກຳຈັດມານພ້ອມທັງເສນາຜູ້ ຊົ່ວຮ້າຍ ເຊິ່ງກີດກັນມະຫາຊົນບໍ່ໃຫ້ຫຼຸດພົ້ນ ເປັນເຜົ່າພັນຂອງຜູ້ຜະໝາດ ຊົງລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຕັນຫາທີ່ເປັນເໝືອນຕາໜ່າງ ຊ່ານໄປເກາະກ່ຽວອາລົມ

(ສົມຈິງດັ່ງຄາຖາປະພັນວ່າ)

ບຸຣຸດມີຕັນຫາເປັນເພື່ອນ ທ່ອງທ່ຽວໄປຕະຫຼອດການຍາວນານ

ຍ່ອມບໍ່ລ່ວງພົ້ນສັງສາຣະວັດທີ່ມີຄວາມເປັນແນວນີ້ ແລະຄວາມເປັນແນວອື່ນ
ພິກຂຸຮູ້ໂທດນີ້ແລ້ວ ຮູ້ຕັນຫາເປັນເຫດໃຫ້ເກີດແຫ່ງທຸກ
ເພິ່ງເປັນຜູ້ບໍ່ມີຕັນຫາ ບໍ່ມີຄວາມຖືໝັ້ນ ມີສະຕິສຳປະຊັນຍະຢູ່

ພຣະຜູ້ມີພຣະພາກເຈົ້າ ຊື່ວ່າຊົງເປັນເອກບຸຣຸດ ຍ້ອນອະທິບາຍວ່າ ຊົງລະຕັນຫາໄດ້ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າຊົງປາສະຈາກຣາຄະໂດຍບໍ່ເຫຼືອ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ ເປັນແນວໃດ

ຄື ພຣະຜູ້ມີພຣະພາກເຈົ້າຊົງປາສະຈາກຣາຄະໂດຍບໍ່ເຫຼືອ ຍ້ອນເປັນຜູ້ລະຣາຄະໄດ້ແລ້ວ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ ຊົງປາສະຈາກໂທສະໂດຍບໍ່ເຫຼືອ ຍ້ອນເປັນຜູ້ລະໂທສະໄດ້ແລ້ວ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ ຊົງປາສະຈາກໂມຫະໂດຍບໍ່ເຫຼືອ ຍ້ອນເປັນຜູ້ລະໂມຫະໄດ້ແລ້ວ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ ຊົງປາສະຈາກກິເລດໂດຍບໍ່ເຫຼືອ ຍ້ອນເປັນຜູ້ລະເຫຼົ່າກິເລດໄດ້ແລ້ວ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າສະເດັດເຖິງທາງສາຍເອກແລ້ວ ຈຶ່ງຊື່ວ່າ ຊົງເປັນເອກບຸຣຸດ ເປັນແນວໃດ?

ຄື ສະຕິປັດຖານ ໔ ຯລຯ ອະຣິຍະມັກມີອົງ ໘ ຕັດຮຽກວ່າ ທາງສາຍເອກ

(ສົມຈິງດັ່ງຄາຖາປະພັນວ່າ)

ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງເຫັນທຳອັນເປັນສ່ວນທີ່ສຸດສິ້ນແຫ່ງຊາດ
ຊົງອະນຸເຄາະດ້ວຍຄວາມເກື້ອກູນ
ຊົງຮູ້ຈັກມັກອັນເປັນທາງສາຍເອກ
ເຊິ່ງເຫຼົ່າບັນດິດໄດ້ຂ້າມມາກ່ອນແລ້ວ
ຈັກຂ້າມ ແລະກຳລັງຂ້າມໂອຄະໄດ້ດ້ວຍມັກນີ້

ພຣະຜູ້ມີພຣະພາກເຈົ້າສະເດັດເຖິງທາງສາຍເອກແລ້ວ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ ເປັນແນວນີ້

ພຣະຜູ້ມີພຣະພາກເຈົ້າຕັດສະຣູ້ ອະນຸດຕະຣະສຳມາສຳໂພທິຍານ ລຳພັງພຣະອົງເອງ ຈຶ່ງຊື່ວ່າຊົງເປັນເອກບຸຣຸດ ເປັນແນວໃດ

ຄື ຍານໃນມັກທັງ ໔ ປັນຍາ ປັນຍິນຊີ ປັນຍາພະລະ ຯລຯ ທຳມະວິຈະຍະສຳໂພດຊົງ ວິມັງສາ ວິປັດສະນາ ສຳມາທິດຖິ ຕັດຮຽກວ່າ ໂພທິ ດ້ວຍໂພທິຍານນັ້ນ ພຣະຜູ້ມີພຣະພາກເຈົ້າຕັດສະຣູ້ວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ທຳທັງປວງເປັນອະນັດຕາ ຯລຯ ຕັດສະຣູ້ວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ອີກໄນໜຶ່ງ ທຳມະຊາດແນວໃດກໍຕາມທີ່ຄວນຕັດສະຮູ້ ຄວນຕັດສະຮູ້ຕາມລຳດັບ ຄວນຕັດສະຮູ້ ສະເພາະ ຄວນຕັດສະຮູ້ດ້ວຍດີ ຄວນບັນລຸ ຄວນຖືກຕ້ອງ ຄວນເຮັດໃຫ້ແຈ້ງ ພຣະຜູ້ມີພຣະພາກເຈົ້າກໍຕັດສະຮູ້ ຕັດສະຮູ້ຕາມລຳດັບ ຕັດສະຮູ້ສະເພາະ ຕັດສະຮູ້ດ້ວຍດີ ຕັດສະຮູ້ໂດຍຊອບ ຊົງບັນລຸ ຊົງຖືກຕ້ອງ ຊົງກະທຳໃຫ້ແຈ້ງທຳມະຊາດນັ້ນທັງໝົດ ດ້ວຍໂພທິຍານນັ້ນ ພຣະຜູ້ມີພຣະພາກເຈົ້າຕັດສະຮູ້ອະນຸດຕະຣະສຳມາສຳໂພທິຍານ ລຳພັງພຣະອົງເອງ ຈຶ່ງຊື່ວ່າ ຊົງເປັນເອກບຸຣຸດ ເປັນແນວນີ້

ຄຳວ່າ ທຳລາຍຄວາມມືດ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊົງທຳລາຍ ຄື ລຸດ ລົດ ລະ ກຳຈັດ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ເຊິ່ງຄວາມມືດຍ້ອນຣາຄະ ຄວາມມືດຍ້ອນໂທສະ ຄວາມມືດຍ້ອນໂມຫະ ຄວາມມືດຍ້ອນມານະ ຄວາມມືດຍ້ອນທິດຖິ ຄວາມມືດຍ້ອນກິເລດ ຄວາມມືດຍ້ອນທຸດຈະຣິດ ເຊິ່ງເຮັດໃຫ້ເປັນຄົນຕາບອດ ເຮັດໃຫ້ບໍ່ມີຈັກຂຸ ເຮັດໃຫ້ບໍ່ມີຍານ ອັນດັບປັນຍາ ເປັນໄປໃນຝ່າຍແຫ່ງຄວາມລຳບາກ ບໍ່ເປັນໄປເພື່ອນິບພານ

ຄຳວ່າ ປະທັບນັ່ງຢູ່ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງຢູ່ທີ່ປາສານະກະເຈດີ ລວມຄວາມວ່າ ປະທັບນັ່ງຢູ່

ພຣະສາວົກທັງຫຼາຍຜູ້ມີວິດຊາ ໓ ລະມັດຈຸຣາດໄດ້
ນັ່ງຫ້ອມລ້ອມພຣະມຸນີຜູ້ເຖິງຝັ່ງແຫ່ງທຸກ ປະທັບນັ່ງຢູ່ທີ່ຂ້າງພູເຂົາ
ພຣະຜູ້ມີພຣະພາກເຈົ້າຊື່ວ່າປະທັບນັ່ງຢູ່ ແນວນີ້ແດ່

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າປະທັບນັ່ງຢູ່ ຍ້ອນຊົງສະຫງັດຈາກຄວາມຂວນຂວາຍທັງປວງແລ້ວ ພຣະອົງຊົງຢູ່ໃນ (ອະຣິຍະວາສະທຳ) ແລ້ວ ຊົງປະພຶດຈະຣະນະທຳ ແລ້ວ ໗ລ໗ ພຣະອົງບໍ່ມີການວຽນເກີດ ວຽນຕາຍ ແລະພົບໃໝ່ກໍບໍ່ມີອີກ ພຣະຜູ້ມີພຣະພາກເຈົ້າ ຊື່ວ່າ ປະທັບນັ່ງຢູ່ ແນວນີ້ແດ່ ລວມຄວາມວ່າ ຊົງເປັນເອກບຸຣຸດ ປະທັບນັ່ງທຳລາຍຄວາມມືດຢູ່

ຄຳວ່າ ຊົງຮຸ່ງເຮື່ອງ ໃນຄຳວ່າ ພຣະໂຄດົມນັ້ນ ໗ລ໗ ຊົງຮຸ່ງເຮື່ອງ ຊົງແຜ່ຣັດສະໝີ

ອະທິບາຍວ່າ ຮຸ່ງເຮື່ອງ ຄື ຊົງມີຄວາມຮູ້ ຊົງເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຮູ້ ມີຍານ ມີປັນຍາຊັດແຈ້ງ ມີປັນຍາເຄື່ອງທຳລາຍກິເລດ

ຄຳວ່າ ຊົງແຜ່ຣັດສະໝີ ໄດ້ແກ່ ຊົງແຜ່ຣັດສະໝີ ຄື ຊົງແຜ່ແສງສະຫວ່າງ ແຜ່ໂອພາດ ແຜ່ແສງສະຫວ່າງເໝືອນປະທີບ ແຜ່ແສງສະຫວ່າງເໝືອນໂຄມໄຟ ແຜ່ແສງສະຫວ່າງຮຸ່ງເຮືອງ ແຜ່ແສງໂຊດຊ່ວງ ລວມຄວາມວ່າ ພຣະໂຄດົມນັ້ນ ໗ລ໗ ຊົງຮຸ່ງເຮື່ອງ ຊົງແຜ່ຣັດສະໝີ

ຄຳວ່າ ພຣະໂຄດົມຜູ້ມີພຣະຍານເໝືອນພູຣີ ອະທິບາຍວ່າ ພຣະໂຄດົມຜູ້ມີພຣະຍານເໝືອນພູຣີ ຄື ມີພຣະຍານຜາກົດ ມີພຣະປັນຍາເປັນທຸງໄຊ ມີພຣະປັນຍາເປັນຍອດທຸງ ມີພຣະ

ປັນຍາ ເປັນໃຫຍ່ ຫຼາຍດ້ວຍການເລືອກເຟັ້ນ ຫຼາຍດ້ວຍຄວາມກວດສອບ ຫຼາຍດ້ວຍປັນຍາ ເພ່ງພິນິດ ມີທຳເປັນເຄື່ອງພິຈາລະນາ ຢູ່ດ້ວຍທຳຊັດແຈ້ງ ທ່ຽວໄປດ້ວຍປັນຍານັ້ນ ຫຼາຍດ້ວຍປັນຍານັ້ນ ໜັກໃນປັນຍານັ້ນ ເອນໄປໃນປັນຍານັ້ນ ໂອນໄປໃນ ປັນຍານັ້ນ ໂນ້ມໄປໃນປັນຍານັ້ນ ນ້ອມໃຈເຊື່ອປັນຍານັ້ນ ມີປັນຍານັ້ນເປັນໃຫຍ່

ທຸງເປັນເຄື່ອງຜາກົດແຫ່ງລົດ
ຄວັນເປັນເຄື່ອງຜາກົດແຫ່ງໄຟ
ພຣະຣາຊາເປັນເຄື່ອງຜາກົດແຫ່ງຣັດ
ສາມີເປັນເຄື່ອງຜາກົດຂອງແມ່ຍິງ

ພຣະໂຄດົມຜູ້ມີພຣະຍານເໝືອນພູຣີ ຄື ມີພຣະຍານຜາກົດ ມີພຣະປັນຍາເປັນທຸງໄຊ ມີພຣະປັນຍາເປັນຍອດທຸງ ມີພຣະປັນຍາເປັນໃຫຍ່ ຫຼາຍດ້ວຍການເລືອກເຟັ້ນ ຫຼາຍດ້ວຍຄວາມກວດສອບ ຫຼາຍດ້ວຍປັນຍາເພ່ງພິນິດ ມີທຳເປັນເຄື່ອງພິຈາລະນາ ຢູ່ດ້ວຍທຳແຈ່ມແຈ້ງ ທ່ຽວໄປດ້ວຍປັນຍານັ້ນ ຫຼາຍດ້ວຍປັນຍານັ້ນ ໜັກໃນປັນຍານັ້ນ ເອນໄປໃນປັນຍານັ້ນ ໂອນໄປໃນປັນຍານັ້ນ ໂນ້ມໄປໃນປັນຍານັ້ນ ນ້ອມໃຈເຊື່ອໄປໃນປັນຍານັ້ນ ມີປັນຍານັ້ນເປັນໃຫຍ່ ສັນນັ້ນຄືກັນ ລວມຄວາມວ່າ ພຣະໂຄດົມຜູ້ມີພຣະຍານເໝືອນພູຣີ

ຄຳວ່າ ພຣະໂຄດົມຜູ້ມີພຣະປັນຍາເໝືອນພູຣີ ອະທິບາຍວ່າ ແຜ່ນດິນທ່ານຮຽກວ່າ ພູຣີ ພຣະຜູ້ມີພຣະພາກເຈົ້າຊົງປະກອບດ້ວຍປັນຍາອັນກວ້າງຂວາງແຜ່ໄປສະເໝີດ້ວຍແຜ່ນດິນນັ້ນ

ປັນຍາທ່ານຮຽກວ່າ ເມທາ ໄດ້ແກ່ ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງາຍ ຄວາມເລືອກເຟັ້ນທຳ ສຳມາທິດຖິ

ພຣະຜູ້ມີພຣະພາກເຈົ້າຊົງປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍປັນຍາເຄື່ອງທຳລາຍກິເລດນັ້ນ ດັ່ງນັ້ນ ພຣະພຸດທະເຈົ້າ ຈຶ່ງຊື່ວ່າຜູ້ມີພຣະປັນຍາເໝືອນພູຣີ ລວມຄວາມວ່າ ພຣະໂຄດົມຜູ້ມີພຣະປັນຍາເໝືອນ ພູຣີ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງກ່າວວ່າ

ພຣະໂຄດົມຊົງເປັນເອກບຸຣຸດ
ປະທັບນັ່ງທຳລາຍຄວາມມືດຢູ່ ຊົງຮຸ່ງເຮືອງ ຊົງແຜ່ຣັດສະໝີ
ພຣະໂຄດົມຜູ້ມີພຣະຍານເໝືອນພູຣີ
ພຣະໂຄດົມມີພຣະປັນຍາເໝືອນພູຣີ

[໑໐໗] (ພຣະປິງຄິຍະເຖຣະກ່າວວ່າ)

ທຳໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
ພຣະຜູ້ມີພຣະພາກເຈົ້າພຣະອົງໃດຊົງສະແດງທຳ

ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ
ເປັນບ່ອນສິ້ນຕັນຫາ ບໍ່ມີອັນຕະລາຍແກ່ອາດຕະມາພາບ (ກ)

ຄຳວ່າ ພຣະອົງໃດ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງໃດຊົງສະແດງທຳ ໗ລ໗ ແກ່ອາດຕະມາພາບ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າເປັນພຣະສັບພັນຍູ ບໍ່ມີຄູອາຈານ ໄດ້ຕັດສະຣູ້ສັດຈະໃນທຳທີ່ບໍ່ເຄີຍສະດັບມາກ່ອນດ້ວຍພຣະອົງເອງ ຊົງບັນລຸຄວາມເປັນພຣະສັບພັນຍູໃນສັດຈະນັ້ນ ແລະຄວາມເປັນຜູ້ຊຳນານໃນພະລະທັງຫຼາຍ

ຄຳວ່າ ທຳ ໃນຄຳວ່າ ຊົງສະແດງທຳ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຕັດບອກ ຊົງສະແດງ ຄື ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດພົມຈັນທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ສະຕິປັດຖານ ໔ ໗ລ໗ ອະຣິຍະມັກ ມີອົງ ໘ ນິບພານ ແລະປະຕິປະທາເຄື່ອງດຳເນີນໄປສູ່ນິບພານ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງໃດ ຊົງສະແດງທຳ ໗ລ໗ ແກ່ອາດຕະມາພາບ

ຄຳວ່າ ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ ອະທິບາຍວ່າ ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ ເຊີນມາເບິ່ງໄດ້ ຄວນນ້ອມເຂົ້າມາໃນຕົນ ວິນຍູຊົນເພິ່ງຮູ້ໄດ້ດ້ວຍຕົນ ລວມຄວາມວ່າ ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ ດ້ວຍປະການແນວນີ້

ອີກໄນໜຶ່ງ ຜູ້ໃດຈະເລີນອະຣິຍະມັກມີອົງ ໘ ໃນພົບນີ້ ຜູ້ນັ້ນຍ່ອມບັນລຸ ປະສົບໄດ້ຮັບຜົນແຫ່ງມັກນັ້ນໄດ້ໃນການທຸກເມື່ອ ບໍ່ມີລຳດັບອື່ນຄັ່ນ ລວມຄວາມວ່າ ທີ່ບຸກຄົນເຫັນໄດ້ເອງແນວນີ້ແດ່

ຄຳວ່າ ບໍ່ຂຶ້ນກັບການເວລາ ອະທິບາຍວ່າ ມະນຸດທັງຫຼາຍລົງທຶນຕາມເວລາ ຍັງບໍ່ໄດ້ຮັບຜົນໃນການທຸກເມື່ອ ຍັງຕ້ອງຖ້າເວລາສັນໃດ ທຳນີ້ບໍ່ເປັນແນວນັ້ນ ຜູ້ໃດຈະເລີນ ອະຣິຍະມັກມີອົງ ໘ ໃນພົບນີ້ ຜູ້ນັ້ນຍ່ອມບັນລຸ ປະສົບ ໄດ້ຮັບຜົນແຫ່ງມັກນັ້ນໃນການທຸກເມື່ອ ບໍ່ມີລຳດັບອື່ນຄັ່ນ ບໍ່ແມ່ນໃນພົບໜ້າ ບໍ່ແມ່ນໃນປະຣະໂລກ ຈຶ່ງຊື່ວ່າບໍ່ຂຶ້ນກັບການເວລາ ແນວນີ້ ລວມຄວາມວ່າ ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ

ຄຳວ່າ ເປັນບ່ອນສິ້ນຕັນຫາ ບໍ່ມີອັນຕະລາຍ ອະທິບາຍວ່າ

ຄຳວ່າ ຕັນຫາ ໄດ້ແກ່ ຣູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ

ຄຳວ່າ ເປັນບ່ອນສິ້ນຕັນຫາ ໄດ້ແກ່ ເປັນບ່ອນສິ້ນຕັນຫາ ຄື ເປັນບ່ອນສິ້ນຣາຄະ ສິ້ນໂທສະ ສິ້ນໂມຫະ ສິ້ນຄະຕິ ສິ້ນອຸປະບັດ ສິ້ນປະຕິສົນທິ ສິ້ນພົບ ສິ້ນສົງສານ ສິ້ນວັດຕະ

ຄໍາວ່າ ບໍ່ມີອັນຕະລາຍ ອະທິບາຍວ່າ ກິເລດ ຂັນ ແລະອະພິສັງຂານ ທ່ານຮຽກວ່າ ອັນຕະລາຍ ອະທິບາຍວ່າ (ທໍາເປັນເຄື່ອງ) ລະອັນຕະລາຍ ເຂົ້າໄປສະງົບອັນຕະລາຍ ສະລັດຖິ້ມ ອັນຕະລາຍ ຣະງັບອັນຕະລາຍ ຄື ອະມະຕະນິບພານ ລວມຄວາມວ່າ ເປັນບ່ອນສິ້ນຕັນຫາ ບໍ່ມີອັນຕະລາຍ

ຄໍາວ່າ ໃດ ໃນຄໍາວ່າ ທໍາໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້ ໄດ້ແກ່ ນິບພານ

ຄໍາວ່າ ບໍ່ມີອັນໃດ ໆ ຯລຯ ປຽບໄດ້ ໄດ້ແກ່ ບໍ່ມີສິ່ງໃດ ໆ ປຽບໄດ້ ຄື ບໍ່ມີຂໍ້ປຽບທຽບ ບໍ່ມີສິ່ງສະເໝີເໝືອນ ບໍ່ມີສ່ວນປຽບທຽບ ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້

ຄໍາວ່າ ບ່ອນໃດ ໄດ້ແກ່ ບ່ອນໃດ ຄື ບ່ອນໃດ ໆ ສະຖານທີ່ໃດ ໆ ພາຍໃນພາຍນອກ ຫຼື ທັງພາຍໃນແລະພາຍນອກ ລວມຄວາມວ່າ ທໍາໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງກ່າວວ່າ

ທໍາໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
ພຣະຜູ້ມີພຣະພາກເຈົ້າພຣະອົງໃດຊົງສະແດງທໍາ
ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ
ເປັນບ່ອນສິ້ນຕັນຫາ ບໍ່ມີອັນຕະລາຍແກ່ອາດຕະມາພາບ

[໑໐໙] (ພາມພາວະຣີກ່າວວ່າ)

ທ່ານປິງຄິຍະ ຍ້ອນເຫດໃດນໍ
ທ່ານຈຶ່ງຢູ່ປາສະຈາກພຣະພຸດທະເຈົ້າພຣະອົງນັ້ນ
ພຣະໂຄດົມຜູ້ມີພຣະຍານເໝືອນພູຣີ
ພຣະໂຄດົມຜູ້ມີພຣະປັນຍາເໝືອນພູຣີ ສິ້ນການບໍ່ດົນ (໗)

ຄໍາວ່າ ຍ້ອນເຫດໃດນໍ ທ່ານຈຶ່ງຢູ່ປາສະຈາກພຣະພຸດທະເຈົ້າພຣະອົງນັ້ນ ອະທິບາຍວ່າ ຍ້ອນເຫດໃດນໍ ທ່ານຈຶ່ງຢູ່ປາສະຈາກ ຄື ອອກໄປ ຫຼີກໄປ ຢູ່ເວັ້ນ ຈາກພຣະພຸດທະເຈົ້າພຣະອົງນັ້ນ ລວມຄວາມວ່າ ຍ້ອນເຫດໃດນໍ ທ່ານຈຶ່ງຢູ່ປາສະຈາກ ພຣະພຸດທະເຈົ້າພຣະອົງນັ້ນ

ຄໍາວ່າ ປິງຄິຍະ ຯລຯ ສິ້ນການບໍ່ດົນ ອະທິບາຍວ່າ ສິ້ນການບໍ່ດົນ ຄື ຊົ່ວຂະນະໜຶ່ງ ຊົ່ວໄລຍະໜຶ່ງ ຊົ່ວໄວໜຶ່ງ ຊົ່ວຊ່ວງໜຶ່ງ ລວມຄວາມວ່າ ສິ້ນການບໍ່ດົນ

ຄໍາວ່າ ປິງຄິຍະ ເປັນຄໍາທີ່ພາມພາວະຣີຮຽກພາມຜູ້ເປັນຫຼານໂດຍຊື່

ຄໍາວ່າ ພຣະໂຄດົມຜູ້ມີພຣະຍານເໝືອນພູຣີ ອະທິບາຍວ່າ ພຣະໂຄດົມຜູ້ມີພຣະປັນຍາເໝືອນ ພູຣີ ຄື ມີພຣະຍານຜາກົດ ມີພຣະປັນຍາເປັນທຸງໄຊ ມີພຣະປັນຍາເປັນຍອດທຸງ ມີພຣະປັນຍາເປັນໃຫຍ່ ຫຼາຍດ້ວຍການເລືອກເຟັ້ນ ຫຼາຍດ້ວຍຄວາມກວດສອບ ຫຼາຍດ້ວຍປັນຍາເພ່ງ

ພິນິດ ມີທຳເປັນເຄື່ອງພິຈາລະນາ ຢູ່ດ້ວຍທຳຊັດແຈ້ງ ທ່ຽວໄປດ້ວຍປັນຍານັ້ນ ຫຼາຍດ້ວຍປັນຍານັ້ນ ໜັກໃນປັນຍານັ້ນ ເອນໄປໃນປັນຍານັ້ນ ໂອນໄປໃນປັນຍານັ້ນ ນ້ອມໄປໃນປັນຍານັ້ນ ນ້ອມໃຈເຊື່ອໃນປັນຍານັ້ນ ມີປັນຍານັ້ນເປັນໃຫຍ່ ລວມຄວາມວ່າ ພຣະໂຄດົມຜູ້ມີພຣະຍານເໝືອນພູຣີ

ຄຳວ່າ ພຣະໂຄດົມຜູ້ມີພຣະປັນຍາເໝືອນພູຣີ ອະທິບາຍວ່າ ແຜ່ນດິນທ່ານຮຽກວ່າ ພູຣີ ພຣະຜູ້ມີພຣະພາກເຈົ້າຊົງປະກອບດ້ວຍປັນຍາກວ້າງຂວາງ ແຜ່ໄປສະເໝີດ້ວຍແຜ່ນດິນນັ້ນ

ປັນຍາທ່ານຮຽກວ່າ ເມທາ ໄດ້ແກ່ ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງາຍ ຄວາມເລືອກເຟັ້ນທຳ ສຳມາທິດຖິ

ພຣະຜູ້ມີພຣະພາກເຈົ້າຊົງປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍປັນຍາເຄື່ອງທຳລາຍກິເລດນັ້ນ ຍ້ອນແນວນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າ ມີພຣະປັນຍາເໝືອນພູຣີ ລວມຄວາມວ່າ ພຣະໂຄດົມຜູ້ມີພຣະປັນຍາເໝືອນພູຣີ ດ້ວຍເຫດນັ້ນ ພາມພາວະຣີນັ້ນຈຶ່ງກ່າວວ່າ

ທ່ານປິງຄິຍະ ຍ້ອນເຫດໃດນໍ
ທ່ານຈຶ່ງຢູ່ປາສະຈາກພຣະພຸດທະເຈົ້າພຣະອົງນັ້ນ
ພຣະໂຄດົມຜູ້ມີພຣະຍານເໝືອນພູຣີ
ພຣະໂຄດົມຜູ້ມີພຣະປັນຍາເໝືອນພູຣີ ສິ້ນການບໍ່ດົນ

[໑໑໐] (ພາມພາວະຣີກ່າວວ່າ)

ທຳໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
ພຣະຜູ້ມີພຣະພາກພຣະອົງໃດຊົງສະແດງທຳ
ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ
ເປັນບ່ອນສິ້ນຕັນຫາ ບໍ່ມີອັນຕະລາຍແກ່ທ່ານ (໗)

ຄຳວ່າ ພຣະອົງໃດ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງໃດຊົງສະແດງທຳ ຯລຯ ແກ່ທ່ານ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າ ຯລຯ ຊົງບັນລຸຄວາມເປັນພຣະສັບພັນຍູໃນສັດຈະນັ້ນ ແລະຄວາມເປັນຜູ້ຊຳນານໃນພະລະທັງຫຼາຍ

ຄຳວ່າ ທຳ ໃນຄຳວ່າ ຊົງສະແດງທຳ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຕັດບອກ ຄືຊົງສະແດງບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດພົມມະຈັນ ທີ່ມີຄວາມງາມໃນເບື້ອງຕົ້ນ ຯລຯ ແລະປະຕິປະທາເຄື່ອງດຳເນີນໄປສູ່ນິບພານ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງໃດ ຊົງສະແດງທຳ ຯລຯ ແກ່ທ່ານ

ຄໍາວ່າ ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ ອະທິບາຍວ່າ ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ ເຊີນມາເບິ່ງໄດ້ ຄວນນ້ອມເຂົ້າມາໃນຕົນ ວິນຍູຊົນເພິ່ງຮູ້ໄດ້ດ້ວຍຕົນ ລວມຄວາມວ່າ ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ ດ້ວຍປະການແນວນີ້

ອີກໄນໜຶ່ງ ຜູ້ໃດຈະເລີນອະຣິຍະມັກມີອົງ ໘ ໃນພົບນີ້ ຜູ້ນັ້ນຍ່ອມບັນລຸ ປະສົບໄດ້ຮັບຜົນແຫ່ງມັກນັ້ນ ໃນການທຸກເມື່ອ ບໍ່ມີລໍາດັບອື່ນຄັ່ນ ລວມຄວາມວ່າ ທີ່ບຸກຄົນເຫັນໄດ້ເອງ ແນວນີ້ແດ່

ຄໍາວ່າ ບໍ່ຂຶ້ນກັບການເວລາ ອະທິບາຍວ່າ ມະນຸດທັງຫຼາຍລົງທຶນຕາມເວລາ ຍັງບໍ່ໄດ້ຮັບຜົນໃນການທຸກເມື່ອ ຍັງຕ້ອງຖ້າເວລາສັນໃດ ທໍານີ້ບໍ່ເປັນແນວນັ້ນ ຜູ້ໃດຈະເລີນອະຣິຍະມັກມີອົງ ໘ ໃນພົບນີ້ ຜູ້ນັ້ນ ຍ່ອມບັນລຸ ປະສົບ ໄດ້ຮັບຜົນແຫ່ງມັກນັ້ນ ໃນການທຸກເມື່ອ ບໍ່ມີລໍາດັບອື່ນຄັ່ນ ບໍ່ແມ່ນໃນພົບໜ້າ ບໍ່ແມ່ນໃນປະຣະໂລກ ຈຶ່ງຊື່ວ່າ ບໍ່ຂຶ້ນກັບການເວລາ ແນວນີ້ ລວມຄວາມວ່າ ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ

ຄໍາວ່າ ເປັນບ່ອນສິ້ນຕັນຫາ ບໍ່ມີອັນຕະລາຍ ອະທິບາຍວ່າ

ຄໍາວ່າ ຕັນຫາ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທໍາມະຕັນຫາ

ຄໍາວ່າ ເປັນບ່ອນສິ້ນຕັນຫາ ໄດ້ແກ່ ເປັນບ່ອນສິ້ນຕັນຫາ ຄື ເປັນບ່ອນສິ້ນຣາຄະ ສິ້ນໂທສະ ສິ້ນໂມຫະ ສິ້ນຄະຕິ ສິ້ນອຸປະບັດ ສິ້ນປະຕິສົນທິ ສິ້ນພົບ ສິ້ນສົງສານ ສິ້ນວັດຕະ

ຄໍາວ່າ ບໍ່ມີອັນຕະລາຍ ອະທິບາຍວ່າ ກິເລດ ຂັນ ແລະອະພິສັງຂານ ຮຽກວ່າ ອັນຕະລາຍ ອະທິບາຍວ່າ (ທໍາທີ່ເປັນເຄື່ອງ) ລະອັນຕະລາຍ ເຂົ້າໄປສະງົບອັນຕະລາຍ ສະລັດຖິ້ມອັນຕະລາຍ ຣະງັບອັນຕະລາຍ ຄື ອະມະຕະນິບພານ ລວມຄວາມວ່າ ເປັນບ່ອນສິ້ນຕັນຫາ ບໍ່ມີອັນຕະລາຍ

ຄໍາວ່າ ໃດ ໃນຄໍາວ່າ ທໍາໃດ ບໍ່ມີອັນໃດ ໆ ບ່ອນໃດປຽບໄດ້ ໄດ້ແກ່ ນິບພານ

ຄໍາວ່າ ບໍ່ມີອັນໃດ ໆ ຯລຯ ປຽບໄດ້ ໄດ້ແກ່ ບໍ່ມີອັນໃດ ໆ ປຽບໄດ້ ຄື ບໍ່ມີຂໍ້ປຽບທຽບ ບໍ່ມີສິ່ງສະເໝີເໝືອນ ບໍ່ມີສ່ວນປຽບທຽບ ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ເລີຍ

ຄໍາວ່າ ບ່ອນໃດ ໄດ້ແກ່ ບ່ອນໃດ ຄື ບ່ອນໃດ ໆ ສະຖານທີ່ໃດ ໆ ພາຍໃນ ພາຍນອກ ຫຼື ທັງພາຍໃນແລະພາຍນອກ ລວມຄວາມວ່າ ທໍາໃດ ບໍ່ມີອັນໃດ ໆ ບ່ອນໃດປຽບໄດ້ ດ້ວຍເຫດນັ້ນ ພາມພາວະຣີນັ້ນຈຶ່ງກ່າວວ່າ

ທໍາໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
พຣະຜູ້ມີພຣະພາກເຈົ້າພຣະອົງໃດຊົງສະແດງທໍາ
ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ
ເປັນບ່ອນສິ້ນຕັນຫາ ບໍ່ມີອັນຕະລາຍແກ່ທ່ານ

[໑໑໑] (ພຣະປິງຄິຍະເຖຣະກ່າວວ່າ)

ທ່ານພາມ ອາດຕະມາພາບບໍ່ໄດ້ຢູ່ປາສະຈາກ
ພຣະພຸດທະເຈົ້າພຣະອົງນັ້ນ ພຣະໂຄດົມຜູ້ມີພຣະຍານເໝືອນພູຣີ
ພຣະໂຄດົມຜູ້ມີພຣະປັນຍາເໝືອນພູຣີ ສິ້ນການບໍ່ດົນ (໑໐)

ຄຳວ່າ ອາດຕະມາພາບບໍ່ໄດ້ຢູ່ປາສະຈາກພຣະພຸດທະເຈົ້າພຣະອົງນັ້ນ ອະທິບາຍວ່າ ອາດຕະມາພາບບໍ່ໄດ້ຢູ່ປາສະຈາກ ຄື ບໍ່ໄດ້ອອກໄປ ບໍ່ໄດ້ຫຼີກໄປ ບໍ່ໄດ້ຢູ່ເວັ້ນຈາກພຣະພຸດທະເຈົ້າພຣະອົງນັ້ນ ລວມຄວາມວ່າ ອາດຕະມາພາບບໍ່ໄດ້ຢູ່ປາສະຈາກພຣະພຸດທະເຈົ້າ ພຣະອົງນັ້ນ

ຄຳວ່າ ທ່ານພາມຯລຯ ສິ້ນການບໍ່ດົນ ອະທິບາຍວ່າ ສິ້ນການບໍ່ດົນ ຄື ຊົ່ວຂະນະໜຶ່ງ ຊົ່ວໄລຍະ ໜຶ່ງ ຊົ່ວໄວໜຶ່ງ ຊົ່ວຊ່ວງໜຶ່ງ ລວມຄວາມວ່າ ສິ້ນການບໍ່ດົນ

ຄຳວ່າ ທ່ານພາມ ເປັນຄຳທີ່ພຣະປິງຄິຍະເຖຣະ ຮຽກພາມພາວະຣີຜູ້ເປັນລຸງໂດຍຄວາມເຄົາລົບ

ຄຳວ່າ ພຣະໂຄດົມຜູ້ມີພຣະຍານເໝືອນພູຣີ ອະທິບາຍວ່າ ພຣະໂຄດົມຜູ້ມີພຣະຍານເໝືອນພູຣີ ຄື ມີພຣະຍານຜາກົດ ມີພຣະປັນຍາເປັນທຸງໄຊ ມີພຣະປັນຍາເປັນຍອດທຸງ ມີພຣະປັນຍາເປັນໃຫຍ່ ຫຼາຍດ້ວຍການເລືອກເຟັ້ນ ຫຼາຍດ້ວຍຄວາມກວດສອບ ຫຼາຍດ້ວຍປັນຍາເພ່ງພິນິດ ມີທຳເປັນເຄື່ອງພິຈາລະນາ ຢູ່ດ້ວຍທຳຊັດແຈ້ງ ທ່ຽວໄປດ້ວຍປັນຍານັ້ນ ຫຼາຍດ້ວຍປັນຍານັ້ນ ໜັກໃນປັນຍານັ້ນ ເອນໄປໃນປັນຍານັ້ນ ໂອນໄປໃນປັນຍານັ້ນ ໂນ້ມໄປໃນປັນຍານັ້ນ ນ້ອມໃຈເຊື່ອໃນປັນຍານັ້ນ ມີປັນຍານັ້ນເປັນໃຫຍ່ ລວມຄວາມວ່າ ພຣະໂຄດົມຜູ້ມີພຣະຍານເໝືອນພູຣີ

ຄຳວ່າ ພຣະໂຄດົມຜູ້ມີພຣະຍານເໝືອນພູຣີ ອະທິບາຍວ່າ ແຜ່ນດິນທ່ານຮຽກວ່າ ພູຣີ ພຣະຜູ້ມີພຣະພາກເຈົ້າຊົງປະກອບດ້ວຍປັນຍາກວ້າງຂວາງ ແຜ່ໄປສະເໝີດ້ວຍແຜ່ນດິນນັ້ນ

ປັນຍາທ່ານຮຽກວ່າ ເມທາ ໄດ້ແກ່ ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມເລືອກເຟັ້ນທຳ ສຳມາທິດຖິ

ພຣະຜູ້ມີພຣະພາກເຈົ້າຊົງປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍປັນຍາເຄື່ອງທຳລາຍກິເລດນັ້ນ ຍ້ອນແນວນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າ ມີພຣະປັນຍາເໝືອນພູຣີ ລວມຄວາມວ່າ ພຣະໂຄດົມຜູ້ມີພຣະປັນຍາເໝືອນພູຣີ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງກ່າວວ່າ

ທ່ານພາມ ອາດຕະມາພາບບໍ່ໄດ້ຢູ່ປາສະຈາກ
ພຣະພຸດທະເຈົ້າພຣະອົງນັ້ນ ພຣະໂຄດົມຜູ້ມີພຣະຍານເໝືອນພູຣີ
ພຣະໂຄດົມຜູ້ມີພຣະປັນຍາເໝືອນພູຣີ ສິ້ນການບໍ່ດົນ

[໑໑๘] (ພຣະປິງຄິຍະເຖຣະກ່າວວ່າ)

ທຳໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
ພຣະຜູ້ມີພຣະພາກເຈົ້າພຣະອົງໃດຊົງສະແດງທຳ
ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ
ເປັນບ່ອນສິ້ນຕັນຫາ ບໍ່ມີອັນຕະລາຍແກ່ອາດຕະມາພາບ (໑໑)

ຄຳວ່າ ພຣະອົງໃດ ໃນຄຳວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງໃດ ຊົງສະແດງທຳฯລฯ ແກ່ອາດຕະມາພາບ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະສັບພັນຍູ ບໍ່ມີຄູອາຈານ ໄດ້ຕັດສະຣູ້ສັດຈະໃນທຳທີ່ບໍ່ເຄີຍສະດັບມາກ່ອນດ້ວຍພຣະອົງເອງ ຊົງບັນລຸຄວາມເປັນພຣະສັບພັນຍູໃນສັດຈະນັ້ນ ແລະຄວາມເປັນຜູ້ຊຳນານໃນພະລະທັງຫຼາຍ

ຄຳວ່າ ທຳ ໃນຄຳວ່າ ຊົງສະແດງທຳ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຕັດບອກ ຄື ຊົງສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ປະກາດພົມມະຈັນທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ສະຕິປັດຖານ ๔ ສຳມັບປະທານ ๔ ອິດທິບາດ ๔ ອິນຊີ ๕ ພະລະ ๕ ໂພດຊົງ ໗ ອະຣິຍະມັກມີອົງ ๘ ນິບພານ ແລະປະຕິທາເຄື່ອງດຳເນີນໄປສູ່ນິບພານ ລວມຄວາມວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງໃດ ຊົງສະແດງທຳ ฯລฯ ແກ່ອາດຕະມາພາບ

ຄຳວ່າ ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ ອະທິບາຍວ່າ ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ ເຊີນມາເບິ່ງໄດ້ ຄວນນ້ອມເຂົ້າມາໃນຕົນ ວິນຍູຊົນເພິ່ງຮູ້ໄດ້ດ້ວຍຕົນ ລວມຄວາມວ່າ ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ ດ້ວຍປະການແນວນີ້

ອີກໄນໜຶ່ງ ຜູ້ໃດຈະເລີນອະຣິຍະມັກມີອົງ ๘ ໃນພົບນີ້ ຜູ້ນັ້ນຍ່ອມບັນລຸ ປະສົບໄດ້ຮັບຜົນແຫ່ງມັກນັ້ນ ໃນການທຸກເມື່ອ ບໍ່ມີລຳດັບອື່ນຄັ່ນ ລວມຄວາມວ່າ ທີ່ບຸກຄົນເຫັນໄດ້ເອງ ແນວນີ້ແດ່

ຄຳວ່າ ບໍ່ຂຶ້ນກັບການເວລາ ອະທິບາຍວ່າ ມະນຸດທັງຫຼາຍລົງທຶນຕາມເວລາ ຍັງບໍ່ ໄດ້ຮັບຜົນໃນການທຸກເມື່ອ ຍັງຕ້ອງຖ້າເວລາສັນໃດ ທຳນີ້ບ່ອນເປັນແນວນັ້ນ ຜູ້ໃດຈະເລີນອະຣິຍະມັກມີອົງ ๘ ໃນພົບນີ້ ຜູ້ນັ້ນ ຍ່ອມບັນລຸ ປະສົບ ໄດ້ຮັບຜົນແຫ່ງມັກ ນັ້ນໃນການທຸກເມື່ອ ບໍ່ມີລຳດັບອື່ນຄັ່ນ ບໍ່ແມ່ນໃນພົບໜ້າ ບໍ່ແມ່ນໃນປະຣະໂລກ ຈຶ່ງຊື່ວ່າບໍ່ຂຶ້ນກັບການເວລາ ແນວນີ້ ລວມຄວາມວ່າ ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ

ຄຳວ່າ ເປັນບ່ອນສິ້ນຕັນຫາ ບໍ່ມີອັນຕະລາຍ ອະທິບາຍວ່າ

ຄຳວ່າ ຕັນຫາ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ

ຄຳວ່າ ເປັນບ່ອນສິ້ນຕັນຫາ ໄດ້ແກ່ ເປັນບ່ອນສິ້ນຕັນຫາ ຄື ສິ້ນຣາຄະ ສິ້ນໂທສະ ສິ້ນໂມຫະ ສິ້ນຄະຕິ ສິ້ນອຸປະບັດ ສິ້ນປະຕິສົນທິ ສິ້ນພົບ ສິ້ນສົງສານ ສິ້ນວັດຕະ

ຄຳວ່າ ບໍ່ມີອັນຕະລາຍ ອະທິບາຍວ່າ ກິເລດ ຂັນ ແລະອະພິສັງຂານ ຮຽກວ່າ ອັນຕະລາຍ ອະທິບາຍວ່າ (ທຳທີ່ເປັນເຄື່ອງ) ລະອັນຕະລາຍ ເຂົ້າໄປສະງົບອັນຕະລາຍ ສະລັດຖິ້ມອັນຕະລາຍ ຣະງັບອັນຕະລາຍ ຄືອະມະຕະນິບພານ ລວມຄວາມວ່າ ເປັນບ່ອນສິ້ນຕັນຫາ ບໍ່ມີອັນຕະລາຍ

ຄຳວ່າ ໃດ ໃນຄຳວ່າ ທຳໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້ ໄດ້ແກ່ ນິບພານ

ຄຳວ່າ ບໍ່ມີອັນໃດ ໆ ฯລฯ ປຽບໄດ້ ໄດ້ແກ່ ບໍ່ມີສິ່ງໃດ ໆ ປຽບໄດ້ ຄື ບໍ່ມີຂໍ້ ປຽບທຽບ ບໍ່ມີສິ່ງສະເໝີເໝືອນ ບໍ່ມີສ່ວນປຽບທຽບ ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້

ຄຳວ່າ ບ່ອນໃດ ໄດ້ແກ່ ບ່ອນໃດ ຄື ບ່ອນໃດ ໆ ສະຖານທີ່ໃດ ໆ ພາຍໃນ ພາຍນອກ ຫຼື ທັງພາຍໃນແລະພາຍນອກ ລວມຄວາມວ່າ ທຳໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງກ່າວວ່າ

> ທຳໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
> ພຣະຜູ້ມີພຣະພາກເຈົ້າພຣະອົງໃດຊົງສະແດງທຳ
> ທີ່ບຸກຄົນເຫັນໄດ້ເອງ ບໍ່ຂຶ້ນກັບການເວລາ
> ເປັນບ່ອນສິ້ນຕັນຫາ ບໍ່ມີອັນຕະລາຍແກ່ອາດຕະມາພາບ

[໑໑໓] (ພຣະປິງຄິຍະເຖຣະກ່າວວ່າ)

> ທ່ານພາມ ອາດຕະມາພາບບໍ່ຜະໝາດ
> ທັງກາງຄືນແລະກາງເວັນ ຍ່ອມເຫັນພຣະໂຄດົມພຸດທະເຈົ້າ
> ພຣະອົງນັ້ນດ້ວຍໃຈ ເໝືອນເຫັນດ້ວຍຕາ
> ອາດຕະມາພາບນອບນ້ອມພຣະອົງຢູ່ຕະຫຼອດຣາຕີ
> ອາດຕະມາພາບເຂົ້າໃຈຄວາມບໍ່ຢູ່ປາສະຈາກ
> ພຣະພຸດທະເຈົ້າພຣະອົງນັ້ນ (໑໘)

ຄຳວ່າ ອາດຕະມາພາບฯລฯຍ່ອມເຫັນພຣະໂຄດົມພຸດທະເຈົ້າພຣະອົງນັ້ນດ້ວຍໃຈເໝືອນເຫັນດ້ວຍຕາ ອະທິບາຍວ່າ ອາດຕະມາພາບຍ່ອມເຫັນ ຄື ແນມເຫັນ ແນມເບິ່ງ ເພ່ງພິນິດພິຈາລະນາເຫັນພຣະຜູ້ມີພຣະພາກພຸດທະເຈົ້າ ເໝືອນຄົນຕາດີ ເພິ່ງເບິ່ງເຫັນ ຄື ແນມເຫັນ ແນມເບິ່ງ ພິຈາລະນາເຫັນຮູບທັງຫຼາຍໃນບ່ອນແຈ້ງ ສັນນັ້ນ ລວມຄວາມວ່າ ອາດຕະມາພາບ ฯລฯ ຍ່ອມເຫັນ ພຣະໂຄດົມພຸດທະເຈົ້າພຣະອົງນັ້ນດ້ວຍໃຈ ເໝືອນເຫັນດ້ວຍຕາ

ຄຳວ່າ ທ່ານພາມ ຯລຯ ບໍ່ຜະໝາດທັງກາງຄືນແລະກາງເວັນ ອະທິບາຍວ່າ ອາດຕະມາພາບຈະເລີນພຸດທານຸດສະຕິດ້ວຍໃຈທັງກາງຄືນ ແລະກາງເວັນ ຊື່ວ່າບໍ່ຜະໝາດ ລວມຄວາມວ່າ ທ່ານພາມ ຯລຯ ບໍ່ຜະໝາດທັງກາງຄືນແລະກາງເວັນ

ຄຳວ່າ ນອບນ້ອມຢູ່ ໃນຄຳວ່າ ນອບນ້ອມຢູ່ຕະຫຼອດຣາຕີ ອະທິບາຍວ່າ ອາດຕະມາພາບນອບນ້ອມຢູ່ ຄື ສັກກາຣະ ເຄົາລົບ ນັບຖື ບູຊາຢູ່ ດ້ວຍກາຍ ວາຈາ ໃຈ ປະຕິບັດເອື້ອປະໂຫຍດ ປະຕິບັດທຳຖືກຕ້ອງຕາມຫຼັກທຳ ໄດ້ແກ່ ໃຫ້ຄືນແລະວັນຜ່ານໄປ ໃຫ້ລ່ວງໄປ(ດ້ວຍການປະຕິບັດ) ລວມຄວາມວ່າ ນອບນ້ອມຢູ່ຕະຫຼອດຣາຕີ

ຄຳວ່າ ອາດຕະມາພາບເຂົ້າໃຈຄວາມບໍ່ຢູ່ປາສະຈາກພຣະພຸດທະເຈົ້າພຣະອົງນັ້ນ ອະທິບາຍວ່າ ອາດຕະມາພາບ ເມື່ອຈະເລີນດ້ວຍພຸດທານຸດສະຕິນັ້ນ ຍ່ອມເຂົ້າໃຈພຣະພຸດທະເຈົ້າພຣະອົງນັ້ນວ່າ ບໍ່ໄດ້ຢູ່ປາສະຈາກ ຍ່ອມເຂົ້າໃຈ ຄື ຮູ້ ຮູ້ດີ ຮູ້ທົ່ວ ຮູ້ຊັດແຈ້ງ ຮູ້ສະເພາະແທງຕະຫຼອດແນວນີ້ວ່າ ບໍ່ໄດ້ຢູ່ປາສະຈາກແລ້ວ ລວມຄວາມວ່າ ອາດຕະມາພາບເຂົ້າໃຈຄວາມບໍ່ຢູ່ປາສະຈາກພຣະພຸດທະເຈົ້າພຣະອົງນັ້ນ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງກ່າວວ່າ

ທ່ານພາມ ອາດຕະມາພາບບໍ່ຜະໝາດ
ທັງກາງຄືນແລະກາງເວັນ ຍ່ອມເຫັນພຣະໂຄດົມພຸດທະເຈົ້າ
ພຣະອົງນັ້ນດ້ວຍໃຈ ເໝືອນເຫັນດ້ວຍຕາ
ອາດຕະມາພາບນອບນ້ອມພຣະອົງຢູ່ຕະຫຼອດຣາຕີ
ອາດຕະມາພາບເຂົ້າໃຈຄວາມບໍ່ຢູ່ປາສະຈາກພຣະພຸດທະເຈົ້າພຣະອົງນັ້ນ

[໑໑໘] (ພຣະປິງຄິຍະເຖຣະກ່າວວ່າ)

ທຳເຫຼົ່ານີ້ ຄື ສັດທາ ປີຕິ ມະນະ ແລະສະຕິ
ຍ່ອມບໍ່ຫາຍໄປຈາກສາດສະໜາຂອງພຣະໂຄດົມພຸດທະເຈົ້າ
ພຣະໂຄດົມຜູ້ມີພຣະປັນຍາເໝືອນພູຣີ ສະເດັດໄປສູ່ທິດໃດ ໆ
ອາດຕະມາພາບເປັນຜູ້ນ້ອມໄປທາງທິດນັ້ນ ໆ ນັ້ນແລ (໑໓)

ຄຳວ່າ ສັດທາ ໃນຄຳວ່າ ສັດທາ ປີຕິ ມະນະ ແລະສະຕິ ອະທິບາຍວ່າ ສັດທາ ຄວາມເຊື່ອ ຄວາມກຳນົດ ຄວາມເຫຼື້ອມໃສ ສັດທາ ຄື ສັດທິນຊີ ສັດທາພະລະ ຜາຣົບພຣະຜູ້ມີພຣະພາກເຈົ້າ

ຄຳວ່າ ປີຕິ ໄດ້ແກ່ ຄວາມອີ່ມເອີບ ຄວາມປາໂມດ ຄວາມຊື່ນໃຈ ຄວາມບັນເທີງ ຄວາມເບີກບານ ຄວາມຣ່າເຣີງ ຄວາມຣື່ນເຣີງ ຄວາມພໍໃຈ ຄວາມຍິນດີ ຄວາມມີໃຈສູງ ຄວາມມີໃຈແຊ່ມຊື່ນ ຄວາມທີ່ໃຈເຫຼື້ອມໃສຍິ່ງ

ຄຳວ່າ ມະນະ ໄດ້ແກ່ ຈິດ ມະໂນ ມານັດ ຫົວໃຈ ປັນທະຣະ ມະນະ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ມະໂນວິນຍານທາດ ອັນເກີດຈາກວິນຍານຂັນນັ້ນຜາຣົບພຣະຜູ້ມີພຣະພາກເຈົ້າ

ຄຳວ່າ ສະຕິ ໄດ້ແກ່ ສະຕິ ຄວາມຣະລຶກເຖິງ ສຳມາສະຕິຜາຣົບພຣະຜູ້ມີພຣະພາກເຈົ້າ ລວມ ຄວາມວ່າ ສັດທາ ປີຕິ ມະນະ ແລະສະຕິ

ຄຳວ່າ ທຳເຫຼົ່ານີ້ ໗ລ໗ ຍ່ອມບໍ່ຫາຍໄປຈາກສາດສະໜາຂອງພຣະໂຄດົມ ອະທິບາຍວ່າ ທຳ ໔ ຢ່າງເຫຼົ່ານີ້ ຍ່ອມບໍ່ຫາຍໄປ ຄື ບໍ່ໄປ ບໍ່ລະໄປ ບໍ່ສູນຫາຍໄປ ຈາກສາດສະໜາຂອງພຣະໂຄດົມ ຄື ຈາກສາດສະໜາຂອງພຣະພຸດທະເຈົ້າ ຈາກສາດສະໜາຂອງພຣະຊິນນະເຈົ້າ ຈາກ ສາດສະໜາຂອງພຣະຕະຖາຄົດ ຈາກສາດສະໜາຂອງພຣະອະຣະຫັນ ລວມຄວາມວ່າ ທຳເຫຼົ່ານີ້ ໗ລ໗ ຍ່ອມບໍ່ຫາຍໄປຈາກສາດສະໜາຂອງພຣະໂຄດົມ

ຄຳວ່າ ສູ່ທິດໃດ ໆ ໃນຄຳວ່າ ພຣະໂຄດົມຜູ້ມີພຣະປັນຍາເໝືອນພູຣີ ສະເດັດໄປສູ່ທິດໃດ ໆ ອະທິບາຍວ່າ ສະເດັດໄປ ດຳເນີນໄປ ມຸ້ງໄປ ມຸ້ງໜ້າສູ່ທິດຕາເວັນອອກ ທິດຕາເວັນຕົກ ທິດໃຕ້ ຫຼື ທິດເໜືອກໍຕາມ

ຄຳວ່າ ຜູ້ມີພຣະປັນຍາເໝືອນພູຣີ ອະທິບາຍວ່າ ຜູ້ມີພຣະປັນຍາເໝືອນພູຣີ ຄື ມີພຣະປັນຍາຫຼາຍ ມີພຣະປັນຍາສຸງບຄົມ ມີພຣະປັນຍາກວ້າງຂວາງ ມີພຣະປັນຍາອາດຫານ ມີພຣະປັນຍາສັບໄວ ມີພຣະປັນຍາເພີກຖອນກິເລດ

ແຜ່ນດິນ ຮຽກວ່າ ພູຣີ ພຣະຜູ້ມີພຣະພາກເຈົ້າຊົງປະກອບດ້ວຍປັນຍານັ້ນກວ້າງຂວາງແຜ່ໄປສະເໝີດ້ວຍແຜ່ນດິນນັ້ນ ລວມຄວາມວ່າ ພຣະໂຄດົມຜູ້ມີພຣະປັນຍາເໝືອນພູຣີ ສະເດັດໄປສູ່ທິດໃດ ໆ

ຄຳວ່າ ອາດຕະມາພາບເປັນຜູ້ນ້ອມໄປທາງທິດນັ້ນ ໆ ນັ້ນແລ ອະທິບາຍວ່າ ພຣະພຸດທະເຈົ້າປະທັບຢູ່ໃນທິດໃດ ອາດຕະມາພາບກໍນ້ອມໄປທາງທິດນັ້ນ ເອນໄປ ໂອນໄປ ໂນ້ມໄປ ນ້ອມໃຈໄປໃນທິດນັ້ນ ມີທິດນັ້ນເປັນໃຫຍ່ ລວມຄວາມວ່າ ອາດຕະມາພາບເປັນຜູ້ນ້ອມໄປທາງທິດນັ້ນ ໆ ນັ້ນແລ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງກ່າວວ່າ

ທຳເຫຼົ່ານີ້ ຄື ສັດທາ ປີຕິ ມະນະ ແລະສະຕິ
ຍ່ອມບໍ່ຫາຍໄປຈາກສາດສະໜາຂອງພຣະໂຄດົມພຸດທະເຈົ້າ
ພຣະໂຄດົມຜູ້ມີພຣະປັນຍາເໝືອນພູຣີ ສະເດັດໄປສູ່ທິດໃດ ໆ
ອາດຕະມາພາບເປັນຜູ້ນ້ອມໄປທາງທິດນັ້ນ ໆ ນັ້ນແລ

[໑໑໕] (ພຣະປິງຄິຍະເຖຣະກ່າວວ່າ)

ອາດຕະມາພາບຊະຣາແລ້ວ ມີກຳລັງແລະເຫື່ອແຮງໜ້ອຍ
ຍ້ອນເຫດນັ້ນແລ ຮ່າງກາຍຈຶ່ງໄປໃນສະຖານທີ່
ທີ່ພຣະພຸດທະເຈົ້າປະທັບຢູ່ບໍ່ໄດ້
ແຕ່ອາດຕະມາພາບໄປເຝົ້າພຣະອົງເປັນນິດ
ໂດຍການໄປດ້ວຍຄວາມດຳຣິ ທ່ານພາມ
ຍ້ອນວ່າໃຈຂອງອາດຕະມາພາບເກາະກ່ຽວຢູ່ກັບສະຖານທີ່
ທີ່ພຣະພຸດທະເຈົ້າປະທັບຢູ່ນັ້ນ (໑໘)

ຄຳວ່າ ຊະຣາແລ້ວ ໃນຄຳວ່າ ອາດຕະມາພາບຊະຣາແລ້ວ ມີກຳລັງ ແລະເຫື່ອແຮງໜ້ອຍໄດ້ແກ່ ຊະຣາແລ້ວ ຄື ເປັນຜູ້ເຖົ້າ ສູງອາຍຸ ລ່ວງການມາຫຼາຍ ຜ່ານໄວມາຫຼາຍ ລວມຄວາມວ່າ ຊະຣາແລ້ວ

ຄຳວ່າ ມີກຳລັງແລະເຫື່ອແຮງໜ້ອຍ ໄດ້ແກ່ ເປັນຜູ້ເຖົ້າ ຄື ມີເຫື່ອແຮງໜ້ອຍລົງ ມີເຫື່ອແຮງບໍ່ຫຼາຍ ລວມຄວາມວ່າ ອາດຕະມາພາບຊະຣາແລ້ວ ມີກຳລັງແລະເຫື່ອແຮງໜ້ອຍ

ຄຳວ່າ ຮ່າງກາຍຈຶ່ງໄປໃນສະຖານທີ່ທີ່ພຣະພຸດທະເຈົ້າປະທັບຢູ່ບໍ່ໄດ້ ອະທິບາຍວ່າ ຮ່າງກາຍໄປບໍ່ໄດ້ ຄື ບໍ່ໄດ້ເຖິງ ບໍ່ໄດ້ເດີນທາງໄປ ບໍ່ໄດ້ກ້າວໄປທາງທີ່ພຣະພຸດທະເຈົ້າປະທັບຢູ່ ລວມຄວາມວ່າ ຮ່າງກາຍຈຶ່ງໄປໃນສະຖານທີ່ທີ່ພຣະພຸດທະເຈົ້າປະທັບຢູ່ບໍ່ໄດ້

ຄຳວ່າ ແຕ່ອາດຕະມາພາບໄປເຝົ້າພຣະອົງເປັນນິດ ໂດຍການໄປດ້ວຍຄວາມດຳຣິ ອະທິບາຍວ່າ ອາດຕະມາພາບໄປເຝົ້າ ຄື ເຖິງ ເດີນທາງໄປ ກ້າວໄປໂດຍການໄປດ້ວຍຄວາມດຳຣິ ຄື ໂດຍການໄປດ້ວຍຄວາມນຶກຄຶດ ດ້ວຍຍານ ດ້ວຍປັນຍາ ດ້ວຍຄວາມຮູ້ ລວມຄວາມວ່າ ແຕ່ອາດຕະມາພາບໄປເຝົ້າພຣະອົງເປັນນິດ ໂດຍການໄປດ້ວຍຄວາມດຳຣິ

ຄຳວ່າ ໃຈ ໃນຄຳວ່າ ທ່ານພາມ ຍ້ອນວ່າໃຈຂອງອາດຕະມາພາບເກາະກ່ຽວຢູ່ກັບສະຖານທີ່ທີ່ພຣະພຸດທະເຈົ້າປະທັບຢູ່ນັ້ນ ໄດ້ແກ່ ຈິດ ມະໂນ ມານັດ ຫົວໃຈ ປັນທະຣະ ມະນະ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ແລະມະໂນວິນຍານທາດທີ່ເກີດ ຈາກວິນຍານຂັນນັ້ນ

ຄຳວ່າ ທ່ານພາມ ຍ້ອນວ່າໃຈຂອງອາດຕະມາພາບເກາະກ່ຽວຢູ່ກັບສະຖານທີ່ທີ່ພຣະພຸດທະເຈົ້າປະທັບຢູ່ນັ້ນ ອະທິບາຍວ່າ ໃຈຂອງອາດຕະມາພາບເກາະກ່ຽວ ຄື ກ່ຽວເນື່ອງ ຜູກພັນກັບສະຖານທີ່ທີ່ພຣະພຸດທະເຈົ້າປະທັບຢູ່ແລ້ວ ລວມຄວາມວ່າ ທ່ານພາມ ຍ້ອນວ່າໃຈຂອງອາດຕະມາພາບເກາະກ່ຽວຢູ່ກັບສະຖານທີ່ທີ່ພຣະພຸດທະເຈົ້າປະທັບຢູ່ນັ້ນ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງກ່າວວ່າ

อาดตะมาพาบชะธาแล้ว มีกำลังและเหื่อแรงน้อย
ย้อนเหดนั้นแล ร่างกายจิ่งไปในสะถานที่
ที่พุดทะเจ้าปะทับยู่บໍ່ได้
แต่อาดตะมาพาบไปเฝ้าพระอົງเป็นนิด
โดยกานไปด้วยความดำริ ท่านพาม
ย้อนว่าใจຂອງอาดตะมาพาบเกาะກ່ງอยู่กับสะถานที่
ที่พระพุดทะเจ้าปะทับยู่นั้น

[໑໑໖] (พระปิງคิยะเถระກ່າວວ່າ)

อาดตะมาพาบนອນດິ້ນຮົນຢູ່ໃນເປືອກຕົມ
ລອຍຈາກເກາະໜຶ່ງໄປສູ່ເກາະໜຶ່ງ
ເມື່ອຕໍ່ມາ ອາດຕະມາພາບໄດ້ເຝົ້າພຣະສຳພຸດທະເຈົ້າ
ຜູ້ຂ້າມໂອຄະໄດ້ແລ້ວ ບໍ່ມີອາສະວະ (໑໕)

ຄຳວ່າ ນອນ ຯລຯ ໃນເປືອກຕົມ ໃນຄຳວ່າ ນອນດິ້ນຮົນຢູ່ໃນເປືອກຕົມ ອະທິບາຍວ່າ ນອນ ຄື ນອນລົງ ຢູ່ ຢູ່ອາໄສ ຢູ່ປະຈຳໃນເປືອກຕົມຄືກາມ ຄື ຕົມຄືກາມ ກິເລດຄືກາມ ເບັດຄືກາມ ຄວາມຮ້ອນຮົນຄືກາມ ຄວາມກັງວົນຄືກາມ ລວມຄວາມວ່າ ນອນຯລຯໃນເປືອກຕົມ

ຄຳວ່າ ດິ້ນຮົນຢູ່ ອະທິບາຍວ່າ ດິ້ນຮົນ ດິ້ນຮົນຢູ່ ສັ່ນເຊນ ກະສັບກະສ່າຍ ດ້ວຍຄວາມດິ້ນຮົນຍ້ອນຕັນຫາ ຍ້ອນທິດຖິ ຍ້ອນກິເລດ ຍ້ອນການປະກອບ ຍ້ອນວິບາກ ຍ້ອນມະໂນທຸດຈະຣິດ ຄື

ຜູ້ກຳໜັດກໍດິ້ນຮົນຕາມອຳນາດ ຣາຄະ
ຜູ້ຂັດເຄືອງກໍດິ້ນຮົນຕາມອຳນາດ ໂທສະ
ຜູ້ຫຼົງກໍດິ້ນຮົນຕາມອຳນາດ ໂມຫະ
ຜູ້ຍຶດຕິດກໍດິ້ນຮົນຕາມອຳນາດ ມານະ
ຜູ້ຍຶດຖືກໍດິ້ນຮົນຕາມອຳນາດ ທິດຖິ
ຜູ້ຟຸ້ງຊ່ານກໍດິ້ນຮົນຕາມອຳນາດອຸດທັດຈະ
ຜູ້ລັງເລກໍດິ້ນຮົນຕາມອຳນາດວິຈິກິດສາ
ຜູ້ຕົກຢູ່ໃນພະລັງກິເລດກໍດິ້ນຮົນຕາມອຳນາດອະນຸໄສ

ດິ້ນຮົນຍ້ອນລາບ ຍ້ອນເສື່ອມລາບ ຍ້ອນຍົດ ຍ້ອນເສື່ອມຍົດ ຍ້ອນນິນທາ ຍ້ອນສັນເສີນ ຍ້ອນສຸກ ຍ້ອນທຸກ

ດິ້ນຮົນຍ້ອນຊາດ ຍ້ອນຊະຣາ ຍ້ອນພະຍາທິ ຍ້ອນມໍຣະນະ ຍ້ອນໂສກະ ປະຣິເທວະ ທຸກຂະ ໂທມະນັດ ແລະອຸປາຍາດ

ດິ້ນຮົນຍ້ອນທຸກເນື່ອງຈາກການເກີດໃນນະຮົກ ຍ້ອນທຸກເນື່ອງຈາກການເກີດໃນກຳເນີດເດຍຣັດສານ ຍ້ອນທຸກເນື່ອງຈາກການເກີດໃນເຜດວິໄສ ຍ້ອນທຸກເນື່ອງຈາກການເກີດໃນໂລກມະນຸດ ຍ້ອນທຸກເນື່ອງຈາກການຖືກຳເນີດໃນທ້ອງ ຍ້ອນທຸກເນື່ອງຈາກການຢູ່ໃນທ້ອງ ຍ້ອນທຸກເນື່ອງຈາກການເກີດຈາກທ້ອງ ຍ້ອນທຸກສືບເນື່ອງມາຈາກຜູ້ເກີດ ຍ້ອນທຸກຂອງຜູ້ເກີດທີ່ເນື່ອງມາຈາກຜູ້ອື່ນ ຍ້ອນທຸກທີ່ເກີດຈາກຄວາມພະຍາຍາມຂອງຕົນເອງ ຍ້ອນທຸກທີ່ເກີດຈາກຄວາມພະຍາຍາມຂອງຜູ້ອື່ນ ຍ້ອນທຸກກາຍທຸກໃຈ ຍ້ອນທຸກທີ່ເກີດຈາກສັງຂານ ຍ້ອນທຸກທີ່ເກີດຈາກຄວາມຜັນປ່ຽນ

ດິ້ນຮົນຍ້ອນທຸກທີ່ເກີດຈາກໂຣກທາງຕາ ຍ້ອນທຸກທີ່ເກີດຈາກໂຣກທາງຫູ ຍ້ອນທຸກທີ່ເກີດຈາກໂຣກທາງດັງ ຍ້ອນທຸກທີ່ເກີດຈາກໂຣກທາງລີ້ນ ຍ້ອນທຸກທີ່ເກີດຈາກໂຣກທາງກາຍ ຍ້ອນທຸກທີ່ເກີດຈາກໂຣກຫົວ ຯລຯ ໂຣກຫູ ຯລຯ ໂຣກປາກ ຯລຯ ໂຣກແຂ້ວ ຯລຯ ໂຣກໄອ ຯລຯ ໂຣກຫືດ ຯລຯ ໄຂ້ຫວັດ ຯລຯ ໄຂ້ພິດ ຯລຯ ໄຂ້ເຊື່ອງຊຶມ ຯລຯ ໂຣກທ້ອງ ຯລຯ ເປັນລົມສະຫລົບ ຯລຯ ລົງແດງ ຯລຯ ຈຸກສຽດ ຯລຯ ອະຫິວາຕະກະໂຣກ ຯລຯ ໂຣກຂີ້ທູດ ຯລຯ ຝີ ຯລຯ ກາກ ຯລຯ ມອງຄໍ່ ຯລຯ ລົມບ້າໝູ ຯລຯ ຫິດເປື່ອຍ ຯລຯ ຫິດດ້ານ ຯລຯ ຫິດ ຯລຯ ຫູດ ຯລຯ ໂຣກລະລອກ ຯລຯ ໂຣກບີຊ່ານຯລຯ ໂຣກບີກຳເຣີບ ຯລຯ ໂຣກເບົາຫວານ ຯລຯ ໂຣກເຣີມ ຯລຯ ໂຣກພຸພອງ ຯລຯ ໂຣກຣິດສີດວງທະວານ ຯລຯ ຄວາມເຈັບປ່ວຍທີ່ເກີດຈາກບີ ຯລຯ ຄວາມເຈັບປ່ວຍທີ່ເກີດຈາກເສມຫະ ຯລຯ ຄວາມເຈັບປ່ວຍທີ່ເກີດຈາກລົມ ຯລຯ ໄຂ້ສັນນິບາດ ຯລຯ ຄວາມເຈັບປ່ວຍທີ່ເກີດຈາກການປ່ຽນລະດູ ຯລຯ. ຄວາມເຈັບປ່ວຍທີ່ເກີດຈາກການຜັດປ່ຽນອິລິຍາບົດບໍ່ໄດ້ສ່ວນກັນຯລຯ ຄວາມເຈັບປ່ວຍທີ່ເກີດຈາກຄວາມພາກພຽນເກີນກຳລັງຯລຯ ຄວາມເຈັບປ່ວຍທີ່ເກີດຈາກຜົນກຳ ຯລຯ ຄວາມໜາວ ຯລຯ ຄວາມຮ້ອນ ຯລຯ ຄວາມຫິວ ຯລຯ ຄວາມກະຫາຍ ຯລຯ ປວດອຸດຈາຣະ ຯລຯ ປວດປັດສາວະ ຯລຯ

ດິ້ນຮົນຍ້ອນທຸກທີ່ເກີດຈາກສຳຜັດເຫຼືອດ ຍຸງ ລົມ ແດດ ແລະສັດເລືອຄານ ທຸກຍ້ອນມານດາຕາຍ ຯລຯ ທຸກຍ້ອນບິດາຕາຍ ຯລຯ ທຸກຍ້ອນອ້າຍນ້ອງຊາຍຕາຍ ຯລຯ ທຸກຍ້ອນເອື້ອຍນ້ອງສາວຕາຍ ຯລຯ ທຸກຍ້ອນບຸດຕາຍ ຯລຯ ທຸກຍ້ອນທິດາຕາຍ ຯລຯ ທຸກຍ້ອນຄວາມພິນາດຂອງຍາດ ຯລຯ ທຸກຍ້ອນໂພຄະຊັບພິນາດ ຯລຯ ທຸກຍ້ອນຄວາມເສຍຫາຍທີ່ເກີດຈາກໂຣກ ຯລຯ ທຸກຍ້ອນສິນວິບັດຯລຯ ທຸກຍ້ອນທິດຖິວິບັດຯລຯ ລວມຄວາມວ່າ ນອນດິ້ນຮົນຢູ່ໃນເປືອກຕົມ

ຄຳວ່າ ລອຍຈາກເກາະໜຶ່ງໄປສູ່ເກາະໜຶ່ງ ອະທິບາຍວ່າ ລອຍ ລອຍໄປ ຄື ລ່ອງລອຍໄປຈາກສາດສະດາ (ທຳອິດ) ໄປຫາອີກສາດສະດາ (ຕໍ່ມາ) ຈາກທຳທີ່ສາດສະດາ (ທຳອິດ) ບອກສູ່ທຳທີ່ສາດສະດາ (ຕໍ່ມາ) ບອກ ຈາກໝູ່ຄະນະ (ທຳອິດ) ສູ່ຄະນະ (ຕໍ່ມາ) ຈາກທິດຖິ

(ທຳອິດ) ສູ່ທິດຖິ (ຕໍ່ມາ) ຈາກປະຕິປະທາ (ທຳອິດ) ສູ່ປະຕິປະທາ (ຕໍ່ມາ) ຈາກມັກ(ທຳອິດ) ສູ່ມັກ (ຕໍ່ມາ) ລວມຄວາມວ່າ ລອຍຈາກເກາະໜຶ່ງໄປສູ່ເກາະໜຶ່ງ

ຄຳວ່າ ເມື່ອຕໍ່ມາ ໃນຄຳວ່າ ເມື່ອຕໍ່ມາ ອາດຕະມາພາບໄດ້ເຝົ້າພຣະສຳພຸດທະເຈົ້າ ເປັນບົດສົນທິ ຯລຯ ຄຳວ່າ ເມື່ອຕໍ່ມາ ນີ້ ເປັນຄຳເຊື່ອມບົດໜ້າກັບບົດຫຼັງເຂົ້ານຳກັນ

ຄຳວ່າ ໄດ້ເຝົ້າ ໄດ້ແກ່ ໄດ້ເຝົ້າ ຄື ໄດ້ແນມເຫັນ ໄດ້ເຫັນ ໄດ້ແທງຕະຫຼອດ

ຄຳວ່າ ພຣະສຳພຸດທະເຈົ້າ ໄດ້ແກ່ ພຣະຜູ້ມີພຣະພາກເຈົ້າ ຜູ້ເປັນພຣະສັບພັນຍູ ບໍ່ມີຄູອາຈານ ຯລຯ ຄຳວ່າ ພຣະພຸດທະເຈົ້າ ນີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ເມື່ອຕໍ່ມາ ອາດຕະມາພາບ ໄດ້ເຝົ້າພຣະສຳພຸດທະເຈົ້າ

ຄຳວ່າ ຜູ້ຊົງຂ້າມໂອຄະໄດ້ແລ້ວ ໃນຄຳວ່າ ຜູ້ຊົງຂ້າມໂອຄະໄດ້ແລ້ວ ບໍ່ມີອາສະວະ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊົງຂ້າມ ຄື ຂ້າມຂຶ້ນ ຂ້າມພົ້ນ ກ້າວລ່ວງ ກ້າວພົ້ນ ລ່ວງພົ້ນກາໂມຄະ ພະໂວຄະ ທິດໂຖຄະ ອະວິດໂຊຄະ ຂ້າມທາງແຫ່ງສົງສານທັງປວງໄດ້ແລ້ວ ພຣະອົງຊົງຢູ່ໃນ (ອະຣິຍະວາສະທຳ) ແລ້ວ ຊົງປະພຶດຈະຣະນະທຳແລ້ວຯລຯ ພຣະອົງບໍ່ມີການວຽນເກີດ ວຽນຕາຍ ແລະພົບ ໃໝ່ກໍບໍ່ມີອີກ ລວມຄວາມວ່າ ຜູ້ຊົງຂ້າມໂອຄະ ໄດ້ແລ້ວ

ຄຳວ່າ ບໍ່ມີອາສະວະ ອະທິບາຍວ່າ ອາສະວະ ໔ ຢ່າງ ຄື

| | |
|---|---|
| ໑. ກາມາສະວະ | ໒. ພະວາສະວະ |
| ໓. ທິດຖາສະວະ | ໔. ອະວິດຊາສະວະ |

ອາສະວະເຫຼົ່ານັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າຊົງລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າ ເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະພຸດທະເຈົ້າຈຶ່ງຊື່ວ່າ ບໍ່ມີອາສະວະ ລວມຄວາມວ່າ ຜູ້ຊົງຂ້າມໂອຄະໄດ້ແລ້ວ ບໍ່ມີອາສະວະ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງກ່າວວ່າ

ອາດຕະມາພາບນອນດີ້ນຣົນຢູ່ໃນເປືອກຕົມ
ລອຍຈາກເກາະໜຶ່ງໄປສູ່ເກາະໜຶ່ງ
ເມື່ອຕໍ່ມາ ອາດຕະມາພາບໄດ້ເຝົ້າພຣະສຳພຸດທະເຈົ້າ
ຜູ້ຊົງຂ້າມໂອຄະໄດ້ແລ້ວ ບໍ່ມີອາສະວະ

[໑໑໗] (ພຣະຜູ້ມີພຣະພາກເຈົ້າສະເດັດມາຕັດວ່າ)

ວັກກະລິ ພັດທະຣາວຸດ ແລະອາລະວິໂຄດົມ
ເປັນຜູ້ມີສັດທາອັນນ້ອມໄປແລ້ວ ສັນໃດ
ແມ່ນທ່ານກໍຈົ່ງເປີດເຜີຍສັດທາ ສັນນັ້ນຄືກັນ
ປິງຄິຍະ ທ່ານຈັກເຖິງຝັ່ງນັ້ນ (ຝັ່ງກົງກັນຂ້າມ) ແຫ່ງບ້ວງມັດຈຸຣາດ (໑໖)

ຄຳວ່າ ວັກກະລິ ພັດທະຣາວຸດ ແລະອາລະວິໂຄດົມ ເປັນຜູ້ມີສັດທາອັນນ້ອມໄປແລ້ວ ສັນໃດ ອະທິບາຍວ່າ ພຣະວັກກະລິເຖຣະ ໄດ້ມີສັດທານ້ອມໄປແລ້ວ ຄື ໜັກໃນສັດທາ ມີສັດທານຳໜ້າ ນ້ອມໃຈໄປຕາມສັດທາ ມີສັດທາເປັນໃຫຍ່ຍິ່ງ ບັນລຸອະຣະຫັນຕະຜົນແລ້ວ ສັນໃດ ພຣະພັດທະຣາວຸດເຖຣະ ມີສັດທາອັນນ້ອມໄປແລ້ວ ຯລຯ ພຣະອາລະວິໂຄດົມ ມີສັດທາ ອັນນ້ອມໄປແລ້ວ ໜັກໃນສັດທາ ມີສັດທານຳໜ້າ ນ້ອມໃຈໄປຕາມສັດທາ ມີສັດທາເປັນໃຫຍ່ ບັນລຸອະຣະຫັນຕະຜົນ ສັນໃດ ລວມຄວາມວ່າ ວັກກະລິ ພັດທະຣາວຸດ ແລະອາລະວິໂຄດົມ ເປັນຜູ້ມີສັດທາອັນນ້ອມໄປແລ້ວ ສັນໃດ

ຄຳວ່າ ແມ່ນທ່ານກໍຈົ່ງເປີດເຜີຍສັດທາ ສັນນັ້ນຄືກັນ ອະທິບາຍວ່າ ທ່ານກໍຈົ່ງເຜີຍ ເປີດເຜີຍ ຄື ສະແດງອອກ ນ້ອມໃຈ ກຳນົດສັດທາ ເຜີຍ ເປີດເຜີຍ ສະແດງອອກ ນ້ອມໃຈ ກຳນົດສັດທາວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ທຳທັງປວງເປັນອະນັດຕາ ຯລຯ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ສັນນັ້ນຄືກັນ ລວມຄວາມວ່າ ແມ່ນທ່ານກໍຈົ່ງເປີດເຜີຍສັດທາ ສັນນັ້ນຄືກັນ

ຄຳວ່າ ປິງຄິຍະ ທ່ານຈັກເຖິງຝັ່ງນັ້ນ (ຝັ່ງກົງກັນຂ້າມ) ແຫ່ງບ້ວງມັດຈຸຣາດ ອະທິບາຍວ່າ ກິເລດ ຂັນ ແລະອະພິສັງຂານ ຮຽກວ່າ ບ້ວງມັດຈຸຣາດ

ອະມະຕະນິບພານ ທຳເປັນບ່ອນຣະງັບແຫ່ງສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ ຮຽກວ່າ ຝັ່ງນັ້ນ (ຝັ່ງກົງກັນຂ້າມ) ແຫ່ງບ້ວງມັດຈຸຣາດ

ຄຳວ່າ ປິງຄິຍະ ທ່ານຈັກເຖິງຝັ່ງນັ້ນ (ຝັ່ງກົງກັນຂ້າມ) ແຫ່ງບ້ວງມັດຈຸຣາດ ອະທິບາຍວ່າ ທ່ານຈັກເຖິງຝັ່ງ ຄື ຈັກບັນລຸຝັ່ງ ຖືກຕ້ອງຝັ່ງ ເຮັດໃຫ້ແຈ້ງຝັ່ງ ລວມຄວາມວ່າ ປິງຄິຍະ ທ່ານຈັກເຖິງຝັ່ງນັ້ນ (ຝັ່ງກົງກັນຂ້າມ) ແຫ່ງບ້ວງມັດຈຸຣາດ ດ້ວຍເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ

ວັກກະລິ ພັດທະຣາວຸດ ແລະອາລະວິໂຄດົມ
ເປັນຜູ້ມີສັດທານ້ອມໄປແລ້ວ ສັນໃດ
ແມ່ນທ່ານກໍຈົ່ງເປີດເຜີຍສັດທາ ສັນນັ້ນຄືກັນ
ປິງຄິຍະ ທ່ານຈັກເຖິງຝັ່ງນັ້ນ (ຝັ່ງກົງກັນຂ້າມ) ແຫ່ງບ້ວງມັດຈຸຣາດ

[໑໑໘] (ພຣະປິງຄິຍະເຖຣະຂາບທູນວ່າ)

ຂ້າພຣະອົງນີ້ຟັງພຣະດຳຣັດຂອງພຣະມຸນີແລ້ວ
ເຫຼື້ອມໃສຢ່າງຍິ່ງ ພຣະສຳມາສຳພຸດທະເຈົ້າ
ຊົງມີເຄື່ອງປິດບັງອັນເປີດແລ້ວ
ບໍ່ມີກິເລດເໝືອນຕະປູຕຶງຈິດ ຊົງມີປະຕິພານ (໑໗)

ຄຳວ່າ ຂ້າພຣະອົງນີ້ ຯລຯ ເຫຼື້ອມໃສຢ່າງຍິ່ງ ອະທິບາຍວ່າ ຂ້າພຣະອົງນີ້ເຫຼື້ອມໃສຢ່າງຍິ່ງ ຄື ເຊື່ອຖືຍິ່ງ ໆ ຂຶ້ນໄປ ກຳນົດໄດ້ໂດຍຍິ່ງຂຶ້ນໄປ ນ້ອມໃຈເຊື່ອໂດຍຍິ່ງ ໆ ຂຶ້ນໄປ ເຫຼື້ອມໃສຢ່າງຍິ່ງ ເຊື່ອຖືຢ່າງຍິ່ງ ໆ ຂຶ້ນໄປ ກຳນົດໄດ້ໂດຍຍິ່ງຂຶ້ນໄປ ນ້ອມໃຈເຊື່ອໂດຍຍິ່ງ ໆ ຂຶ້ນໄປວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສັງຂານທັງປວງເປັນທຸກ ຯລຯ ທຳທັງປວງ ເປັນອະນັດຕາ ຯລຯ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ລວມຄວາມວ່າ ຂ້າພຣະອົງນີ້ ຯລຯ ເຫຼື້ອມໃສຢ່າງຍິ່ງ

ຄຳວ່າ ຟັງພຣະດຳຣັດຂອງພຣະມຸນີແລ້ວ ອະທິບາຍວ່າ

ຄຳວ່າ ພຣະມຸນີ ຍານ ທ່ານຮຽກວ່າ ໂມນະ ໄດ້ແກ່ ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ພຣະອົງກ້າວລ່ວງກິເລດເຄື່ອງຂ້ອງ ແລະຕັນຫາເໝືອນຕາໜ່າງໄດ້ແລ້ວ ຊື່ວ່າພຣະມຸນີ

ຄຳວ່າ ຟັງພຣະດຳຣັດຂອງພຣະມຸນີແລ້ວ ອະທິບາຍວ່າ ໄດ້ຟັງ ຄື ໄດ້ສະດັບ ໄດ້ຮຽນ ໄດ້ຊົງຈຳ ໄດ້ເຂົ້າໄປກຳນົດພຣະດຳຣັດ ຄື ຄຳທີ່ເປັນແນວທາງ ເທດສະໜາ ຄຳສັ່ງສອນ ຄຳພ່ຳສອນຂອງພຣະອົງ ລວມຄວາມວ່າ ຟັງພຣະດຳຣັດຂອງພຣະມຸນີແລ້ວ

ຄຳວ່າ ພຣະສຳມາສຳພຸດທະເຈົ້າ ຊົງມີເຄື່ອງປິດບັງອັນເປີດແລ້ວ ອະທິບາຍວ່າ

ຄຳວ່າ ເຄື່ອງປິດບັງ ໄດ້ແກ່ ເຄື່ອງປິດບັງ ໕ ຢ່າງ ຄື

໑. ເຄື່ອງປິດບັງ ຄື ຕັນຫາ
໒. ເຄື່ອງປິດບັງ ຄື ທິດຖິ
໓. ເຄື່ອງປິດບັງ ຄື ກິເລດ
໔. ເຄື່ອງປິດບັງ ຄື ທຸດຈະຣິດ
໕. ເຄື່ອງປິດບັງ ຄື ອະວິດຊາ

ເຄື່ອງປິດບັງເຫຼົ່ານັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າຊົງເປີດແລ້ວ ຄື ຊົງຮື້ອອກ ເພີກຖອນ ລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ດັ່ງນັ້ນ ພຣະພຸດທະເຈົ້າ ຈຶ່ງຊື່ວ່າຊົງມີເຄື່ອງປິດບັງອັນເປີດແລ້ວ

ຄຳວ່າ ພຣະພຸດທະເຈົ້າ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າ ພຣະອົງນັ້ນ ຯລຯ ຄຳວ່າ ພຣະພຸດທະເຈົ້ານີ້ ເປັນສັດສິກາບັນຍັດ ລວມຄວາມວ່າ ເປັນຜູ້ຕັດສະຣູ້ຊອບເອງ ຊົງມີເຄື່ອງປິດບັງອັນເປີດແລ້ວ

ຄຳວ່າ ບໍ່ມີກິເລດເໝືອນຕະປູຕຶງຈິດ ໃນຄຳວ່າ ບໍ່ມີກິເລດເໝືອນຕະປູຕຶງຈິດ ຊົງມີປະຕິພານ ອະທິບາຍວ່າ ຣາຄະ ຊື່ວ່າກິເລດເໝືອນຕະປູຕຶງຈິດ ໂທສະ ຊື່ວ່າກິເລດເໝືອນຕະປູຕຶງຈິດ ໂມຫະ ຊື່ວ່າກິເລດເໝືອນຕະປູຕຶງຈິດ ໂກທະ ຊື່ວ່າກິເລດເໝືອນຕະປູຕຶງຈິດ ອຸປະນາຫະ ຊື່ວ່າກິເລດເໝືອນຕະປູຕຶງຈິດ ຯລຯ ອະກຸສະລາພິສັງຂານທຸກປະເພດ ຊື່ວ່າກິເລດເໝືອນຕະປູຕຶງຈິດ ກິເລດເໝືອນຕະປູຕຶງຈິດເຫຼົ່ານັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າຊົງລະໄດ້ເດັດຂາດ

ແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະພຸດທະເຈົ້າ ຈຶ່ງຊື່ວ່າບໍ່ມີກິເລດເໝືອນຕະປູຕຶງຈິດ

## ວ່າດ້ວຍບຸກຄົນຜູ້ມີປະຕິພານ ໓ ຈຳພວກ

ຄຳວ່າ ຊົງມີປະຕິພານ ອະທິບາຍວ່າ ບຸກຄົນຜູ້ມີປະຕິພານມີ ໓ ຈຳພວກ ຄື

໑. ບຸກຄົນຜູ້ມີປະຕິພານຍ້ອນປະຣິຍັດ
໒. ບຸກຄົນຜູ້ມີປະຕິພານຍ້ອນປະຣິປຸດສາ
໓. ບຸກຄົນຜູ້ມີປະຕິພານຍ້ອນອະທິຄະມະ

ບຸກຄົນຜູ້ມີປະຕິພານຍ້ອນປະຣິຍັດ ເປັນແນວໃດ?

ຄື ບຸກຄົນບາງຄົນໃນສາດສະໜານີ້ ໄດ້ຮ່ຳຮຽນພຣະພຸດທະພົດ ຄື ສຸດຕະ ເຄີຍຍະເວີຍຍາກະຣະນະ ຄາຖາ ອຸດານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ຍານ (ຄວາມຮູ້) ຂອງບຸກຄົນນັ້ນຍ່ອມຊັດແຈ້ງ ຍ້ອນອາໄສການຮ່ຳຮຽນ ບຸກຄົນນີ້ຊື່ວ່າຜູ້ມີປະຕິພານຍ້ອນປະຣິຍັດ

ບຸກຄົນຜູ້ມີປະຕິພານຍ້ອນປະຣິປຸດສາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນສາດສະໜານີ້ ເປັນຜູ້ໄຕ່ສວນໃນເລື້ອງຄວາມໝາຍ ໃນເລື້ອງທີ່ຄວນຮູ້ ໃນລັກສະນະ ໃນເຫດ ໃນຖານະ ແລະອະຖານະ (ຄວາມເປັນໄປໄດ້ແລະເປັນໄປບໍ່ໄດ້) ຍານຂອງເຂົາຍ່ອມຊັດແຈ້ງ ຍ້ອນອາໄສການໄຕ່ສວນ ບຸກຄົນນີ້ຊື່ວ່າຜູ້ມີປະຕິພານຍ້ອນປະຣິປຸດສາ

ບຸກຄົນຜູ້ມີປະຕິພານຍ້ອນອະທິຄະມະ ເປັນແນວໃດ?

ຄື ບຸກຄົນບາງຄົນໃນສາດສະໜານີ້ ໄດ້ບັນລຸສະຕິປັດຖານ ໔ ສຳມັບປະທານ ໔

ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ອະຣິຍະມັກ ໔ ສາມັນຍະຜົນ ໔ ປະຕິສຳພິທາ ໔ ອະພິນຍາ ໖ ບຸກຄົນນັ້ນຮູ້ເຫດ ຮູ້ຜົນ ຮູ້ນິຣຸດຕິ (ພາສາ) ເມື່ອຮູ້ເຫດ ເຫດຍ່ອມຊັດແຈ້ງ ເມື່ອຮູ້ຜົນ ຜົນຍ່ອມຊັດແຈ້ງ ເມື່ອຮູ້ນິຣຸດຕິ ນິຣຸດຕິຍ່ອມຊັດແຈ້ງ ຍານໃນເຫດ ຜົນ ແລະນິຣຸດຕິທັງ ໓ ເຫຼົ່ານີ້ ຊື່ວ່າ ປະຕິພານປະຕິສຳພິທາ

ພຣະຜູ້ມີພຣະພາກເຈົ້າຊົງປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍປະຕິພານປະຕິສຳພິທານີ້ ດັ່ງນັ້ນ ພຣະພຸດທະເຈົ້າ ຊື່ວ່າຊົງມີປະຕິພານ ຜູ້ໃດບໍ່ມີປະຣິຍັດ ບໍ່ມີປະຣິປຸດສາ ບໍ່ມີອະທິຄະມະ ຍານອັນໃດນໍ ຈັກຊັດແຈ້ງແກ່ເຂົາໄດ້ ລວມຄວາມວ່າ ບໍ່ມີກິເລດເໝືອນຕະປູຕຶງຈິດ ຊົງມີປະຕິພານ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງຂາບທູນວ່າ

ຂ້າພຣະອົງນີ້ຟັງພຣະດຳຣັດຂອງພຣະມຸນີແລ້ວ
ເຫຼື້ອມໃສຢ່າງຍິ່ງ ພຣະສຳມາສຳພຸດທະເຈົ້າ
ຊົງມີເຄື່ອງປິດບັງອັນເປີດແລ້ວ
ບໍ່ມີກິເລດເໝືອນຕະປູຕຶງຈິດ ຊົງມີປະຕິພານ

[໑໑໙] (ພຣະປິງຄິຍະເຖຣະຂາບທູນວ່າ)

ພຣະຜູ້ມີພຣະພາກເຈົ້າຊົງຮູ້ແຈ້ງອະທິເທບ
ຊົງຮູ້ທຳຂອງພຣະອົງແລະຂອງຄົນອື່ນທັງປວງ
ເປັນພຣະສາດສະດາຜູ້ທຳສ່ວນສຸດແຫ່ງບັນຫາທັງຫຼາຍ
ເພື່ອເຫຼົ່າຊົນຜູ້ມີຄວາມສົງໄສ ໃຫ້ກັບຮູ້ໄດ້ (໑໗)

## ວ່າດ້ວຍເທບ ໓

ຄຳວ່າ ຊົງຮູ້ແຈ້ງອະທິເທບ ອະທິບາຍວ່າ
ຄຳວ່າ ເທບ ໄດ້ແກ່ ເທບ ໓ ຈຳພວກ ຄື

໑. ສົມມຸດຕິເທບ
໒. ອຸປັດຕິເທບ
໓. ວິສຸດທິເທບ

ສົມມຸດຕິເທບ ເປັນແນວໃດ?
ຄື ພຣະຣາຊາ ພຣະຣາດຊະກຸມານ ແລະພຣະຣາດຊະເທວີ ເຫຼົ່ານີ້ຮຽກວ່າ ສົມມຸດຕິເທບ

ອຸປັດຕິເທບ ເປັນແນວໃດ?
ຄື ເທວະດາຊັ້ນຈາຕຸມະຫາຣາດ ເທວະດາຊັ້ນຕາວະຕຶງສາ ຯລຯ ເທວະດາຜູ້ນັບເນື່ອງໃນໝູ່ພົມ ແລະເທວະດາຊັ້ນສູງກວ່ານັ້ນ ເຫຼົ່ານີ້ຮຽກວ່າ ອຸປັດຕິເທບ

ວິສຸດທິເທບ ເປັນແນວໃດ?
ຄື ພຣະຕະຖາຄົດເຈົ້າ ສາວົກຂອງພຣະຕະຖາຄົດເຈົ້າ ພຣະອະຣະຫັນຕະຂີນາສົບ ແລະພຣະປັດເຈກສຳພຸດທະເຈົ້າ ເຫຼົ່ານີ້ຮຽກວ່າ ວິສຸດທິເທບ

ພຣະຜູ້ມີພຣະພາກເຈົ້າຊົງຮູ້ແຈ້ງເຫຼົ່າສົມມຸດຕິເທບວ່າ ເປັນອະທິເທບ ຊົງຮູ້ຈັກເຫຼົ່າອຸປັດຕິເທບ ວ່າເປັນອະທິເທບ ຊົງຮູ້ແຈ້ງ ຄື ຊົງຮູ້ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງເຊິ່ງເຫຼົ່າວິສຸດທິເທບວ່າ ເປັນອະທິເທບ ລວມຄວາມວ່າ ຊົງຮູ້ແຈ້ງອະທິເທບ

ຄຳວ່າ ຊົງຮູ້ແຈ້ງທຳຂອງພຣະອົງ ແລະຂອງຄົນອື່ນທັງປວງ ອະທິບາຍວ່າ

ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ ຄື ຊົງຮູ້ ຊົງຖືກຕ້ອງ ແທງຕະຫຼອດທຳທີ່ເຮັດພຣະອົງ ແລະຊົນເຫຼົ່າອື່ນໃຫ້ເປັນອະທິເທບ

ທຳທີ່ເຮັດພຣະອົງໃຫ້ເປັນອະທິເທບ ເປັນແນວໃດ?

ຄື ການປະຕິບັດຊອບ ການປະຕິບັດເໝາະສົມ ການປະຕິບັດທີ່ບໍ່ເປັນຂ້າເສິກ ການປະຕິບັດທີ່ເອື້ອປະໂຫຍດ ການປະຕິບັດທຳຖືກຕ້ອງຕາມຫຼັກທຳ ການຮັກສາສິນໃຫ້ ບໍລິບູນ ຄວາມເປັນຜູ້ສັງລວມອິນຊີ ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກອາຫານ ຄວາມເປັນຜູ້ມີຄວາມພຽນເປັນເຄື່ອງຕື່ນຢູ່ສະເໝີ ສະຕິສຳປະຊັນຍະ ສະຕິປັດຖານ ໔ ຯລຯ ອະຣິຍະມັກມີອົງ ໘ ເຫຼົ່ານີ້ ຮຽກວ່າ ທຳທີ່ເຮັດພຣະອົງໃຫ້ເປັນອະທິເທບ

ທຳທີ່ເຮັດຊົນເຫຼົ່າອື່ນໃຫ້ເປັນອະທິເທບ ເປັນແນວໃດ?

ຄື ການປະຕິບັດຊອບ ຯລຯ ອະຣິຍະມັກມີອົງ ໘ ເຫຼົ່ານີ້ຮຽກວ່າ ທຳທີ່ເຮັດຊົນເຫຼົ່າອື່ນໃຫ້ເປັນອະທິເທບ ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ ຄື ຊົງຮູ້ ຊົງຖືກຕ້ອງ ແທງຕະຫຼອດ ທຳທີ່ເຮັດພຣະອົງ ແລະຊົນເຫຼົ່າອື່ນໃຫ້ເປັນອະທິເທບ ເປັນແນວນີ້ ລວມຄວາມວ່າ ຊົງຮູ້ແຈ້ງທຳຂອງພຣະອົງ ແລະຂອງຄົນອື່ນທັງປວງ

ຄຳວ່າ ເປັນພຣະສາດສະດາຜູ້ທຳສ່ວນສຸດແຫ່ງບັນຫາທັງຫຼາຍ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຊົງກະທຳສ່ວນສຸດ ຄື ຊົງກະທຳບ່ອນສຸດຮອບ ຊົງກະທຳບ່ອນກຳນົດ ຊົງກະທຳຄວາມຈົບແຫ່ງບັນຫາຂອງພາມ ຜູ້ສະແຫວງຫາຝັ່ງ ຯລຯ ໄດ້ແກ່ ຊົງກະທຳສ່ວນສຸດ ທຳທີ່ສຸດຮອບ ທຳທີ່ກຳນົດ ກະທຳຄວາມຈົບແຫ່ງບັນຫາຂອງສະພິຍະພາມ ຯລຯ ແຫ່ງບັນຫາຂອງພຣະປິງຄິຍະເຖຣະ ຯລຯ ແຫ່ງບັນຫາຂອງທ້າວສັກກະ ຯລຯ ແຫ່ງບັນຫາຂອງທ້າວສຸຍາມ ຯລຯ ແຫ່ງບັນຫາຂອງພິກຂຸ ຯລຯ ແຫ່ງບັນຫາຂອງພິກຂຸນີ ຯລຯ ແຫ່ງບັນຫາຂອງອຸປາສົກ ຯລຯ ແຫ່ງບັນຫາຂອງອຸປາສິກາ ຯລຯ ແຫ່ງບັນຫາຂອງພຣະຣາຊາ ຯລຯ ແຫ່ງບັນຫາຂອງກະສັດ ຯລຯ ແຫ່ງບັນຫາຂອງພາມ ຯລຯ ແຫ່ງບັນຫາຂອງແພດ ຯລຯ ແຫ່ງບັນຫາຂອງສູດ ຯລຯ ແຫ່ງບັນຫາຂອງເທວະດາ ຯລຯ ແຫ່ງບັນຫາຂອງພຣະພົມ

ຄຳວ່າ ເປັນພຣະສາດສະດາ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງນຳໝູ່ ຊື່ວ່າພຣະສາດສະດາ ເໝືອນບຸກຄົນຜູ້ນຳໝູ່ກວຽນ ຍ່ອມນຳໝູ່ກວຽນຂ້າມບ່ອນກັນດານ ຂ້າມ ຄື ຂ້າມໄປ ຂ້າມອອກ ຂ້າມພົ້ນບ່ອນກັນດານຍ້ອນໂຈນ ບ່ອນກັນດານຍ້ອນສັດຮ້າຍ ບ່ອນກັນດານຍ້ອນອຶດຢາກ ບ່ອນກັນດານຍ້ອນຂາດນ້ຳ ໄດ້ແກ່ ໃຫ້ເຖິງຖິ່ນທີ່ປອດໄພ ສັນໃດ

ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງນຳໝູ່ ຍ່ອມຊົງນຳໝູ່ຂ້າມບ່ອນກັນດານ ຂ້າມ ຄື ຂ້າມໄປ ຂ້າມອອກ ຂ້າມພົ້ນບ່ອນກັນດານຍ້ອນຄວາມເກີດ ຄວາມແກ່ ຄວາມເຈັບປ່ວຍ ຄວາມຕາຍ ຄວາມເສົ້າໂສກ ຄວາມຄ່ຳຄວນ ຄວາມທຸກກາຍ ຄວາມທຸກໃຈ ຄວາມຄັບແຄ້ນໃຈ ບ່ອນກັນດານຍ້ອນຄວາມກຳໜັດ ບ່ອນກັນດານຍ້ອນຄວາມຂັດເຄືອງ ຄວາມລຸ້ມຫຼົງ ຄວາມຖືຕົວ ທິດ

ຖິ ກິເລດ ທຸດຈະຣິດ ຄື ຄວາມຮົກທຶບຍ້ອນຄວາມກຳໜັດ ຄວາມຮົກທຶບຍ້ອນຄວາມຂັດເຄືອງ ຄວາມຮົກທຶບຍ້ອນຄວາມລຸ້ມຫຼົງ ຄວາມຮົກທຶບຍ້ອນທິດຖິ ຄວາມຮົກທຶບຍ້ອນກິເລດ ຄວາມຮົກທຶບຍ້ອນທຸດຈະຣິດ ໄດ້ແກ່ ໃຫ້ເຖິງອະມະຕະນິບພານອັນເປັນແດນກະເສມ ສັນນັ້ນຄືກັນ ຍ້ອນເຫດນັ້ນ ພຣະສາດສະດາຈຶ່ງຊື່ວ່າຜູ້ຊົງນຳໝູ່ ແນວນີ້ແດ່

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າ ຊົງເປັນຜູ້ນຳ ເປັນຜູ້ນຳໄປໂດຍວິເສດ ເປັນຜູ້ຕາມແນະນຳ ຊົງໃຫ້ຮູ້ຈັກປະໂຫຍດ ໃຫ້ພິນິດພິຈາລະນາ ໃຫ້ເພ່ງປະໂຫຍດ ຊົງເຮັດໃຫ້ເຫຼື້ອມໃສໄດ້ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າ ພຣະສາດສະດາຈຶ່ງຊື່ວ່າຜູ້ຊົງນຳໝູ່ ແນວນີ້ແດ່

ອີກໄນໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເຮັດມັກທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຊົງເຮັດມັກ ທີ່ຍັງບໍ່ເກີດໃຫ້ເກີດພ້ອມ ຕັດບອກມັກທີ່ຍັງບໍ່ໄດ້ຕັດບອກ ຊົງຮູ້ຈັກມັກ ຊົງຮູ້ແຈ້ງມັກ ຊົງສະຫຼາດໃນມັກ ແລະສາວົກຂອງພຣະອົງຜູ້ດຳເນີນໄປຕາມມັກຢູ່ໃນບັດນີ້ ຈະພຽບພ້ອມດ້ວຍສີລາທິຄຸນໃນພາຍຫຼັງ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຊື່ວ່າ ຜູ້ຊົງນຳໝູ່ ແນວນີ້ແດ່ ລວມຄວາມວ່າເປັນພຣະສາດສະດາຜູ້ທຳສ່ວນສຸດແຫ່ງບັນຫາທັງຫຼາຍ

ຄຳວ່າ ເພື່ອເຫຼົ່າຊົນຜູ້ມີຄວາມສົງໄສ ໃຫ້ກັບຮູ້ໄດ້ ອະທິບາຍວ່າ ເຫຼົ່າຊົນຜູ້ມີຄວາມສົງໄສມາແລ້ວ ກໍຫາຍສົງໄສກັບໄປ ຜູ້ມີຄວາມຍຸ້ງຍາກມາແລ້ວ ກໍຫາຍຍຸ້ງຍາກກັບໄປ ຜູ້ມີຄວາມຄິດສອງຈິດສອງໃຈມາແລ້ວ ກໍຫາຍຄວາມຄິດສອງຈິດສອງໃຈກັບໄປ ຜູ້ມີຄວາມລັງເລ ມາແລ້ວກໍຫາຍຄວາມລັງເລກັບໄປ ຜູ້ມີຣາຄະມາແລ້ວ ກໍໝົດຣາຄະກັບໄປ ຜູ້ມີໂທສະມາແລ້ວ ກໍໝົດໂທສະກັບໄປ ຜູ້ມີໂມຫະມາແລ້ວ ກໍໝົດໂມຫະກັບໄປ ຜູ້ມີກິເລດມາແລ້ວ ກໍໝົດກິເລດກັບໄປ ລວມຄວາມວ່າ ເພື່ອເຫຼົ່າຊົນຜູ້ມີຄວາມສົງໄສ ໃຫ້ກັບຮູ້ໄດ້ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງຂາບທູນວ່າ

ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ແຈ້ງອະທິເທບ
ຊົງຮູ້ທຳຂອງພຣະອົງແລະຂອງຄົນອື່ນທັງປວງ
ເປັນພຣະສາດສະດາຜູ້ທຳສ່ວນສຸດແຫ່ງບັນຫາທັງຫຼາຍ
ເພື່ອເຫຼົ່າຊົນຜູ້ມີຄວາມສົງໄສ ໃຫ້ກັບຮູ້ໄດ້

[໑໘໐] (ພຣະປິງຄິຍະເຖຣະຂາບທູນວ່າ)

ສະພາວະໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
ສະພາວະນັ້ນ ອັນອັນໃດນຳໄປບໍ່ໄດ້ ບໍ່ກຳເຣີບ
ຂ້າພຣະອົງຈັກເຖິງສະພາວະນັ້ນແນ່ນອນ
ຄວາມສົງໄສໃນສະພາວະນັ້ນບໍ່ມີແກ່ຂ້າພຣະອົງ
ຂໍພຣະອົງໂຜດຊົງຈຳຂ້າພຣະອົງວ່າ
ເປັນຜູ້ມີຈິດນ້ອມໄປໃນສະພາວະນັ້ນແລ້ວ ດ້ວຍປະການແນວນີ້ແລ (໑໗)

ຄຳວ່າ ສະພາວະນັ້ນອັນອັນໃດນຳໄປບໍ່ໄດ້ ບໍ່ກຳເຣີບ ອະທິບາຍວ່າ ອະມະຕະນິບພານ ຮຽກວ່າ ທຳເປັນບ່ອນຣະງັບແຫ່ງສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ ສະພາວະນັ້ນອັນອັນໃດນຳໄປບໍ່ໄດ້

ຄຳວ່າ ສະພາວະນັ້ນອັນອັນໃດນຳໄປບໍ່ໄດ້ ອະທິບາຍວ່າ ນິບພານ ອັນຣາຄະ ໂທສະ ໂມຫະ ໂກທະ ອຸປະນາຫະ ມັກຂະ ປະລາສະ ອິດສາ ມັດສະຣິຍະ ມາຍາ ສາເຖີຍຍະ ຖຳພະ ສາຣຳພະ ມານະ ອະຕິມານະ ມະທະ ປະມາທະ ກິເລດທຸກຊະນິດ ທຸດຈະຣິດທຸກທາງ ຄວາມຮ້ອນຮົນທຸກຢ່າງ ອາສະວະທຸກຊະນິດ ຄວາມກະວົນກະວາຍທຸກຢ່າງ ຄວາມເດືອດຮ້ອນທຸກປະການ ອະກຸສະລາພິສັງຂານທຸກປະເພດ ນຳໄປບໍ່ໄດ້ ຄື ເປັນຂອງທ່ຽງ ໝັ້ນຄົງ ແນ່ນອນ ມີການບໍ່ຜັນປ່ຽນໄປເປັນທຳມະດາ ລວມຄວາມວ່າ ສະພາວະນັ້ນອັນອັນໃດ ນຳໄປ ບໍ່ໄດ້

ຄຳວ່າ ບໍ່ກຳເຣີບ ອະທິບາຍວ່າ ອະມະຕະນິບພານ ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ ຮຽກວ່າ (ສະພາວະ) ບໍ່ກຳເຣີບ

ຄວາມເກີດຂຶ້ນແຫ່ງນິບພານ ບໍ່ຜາກົດ ຄວາມເສື່ອມບໍ່ມີ ຄວາມເປັນແນວອື່ນຂອງນິບພານນັ້ນ ກໍບໍ່ຜາກົດ ນິບພານຈຶ່ງເປັນສະພາວະທ່ຽງ ໝັ້ນຄົງ ແນ່ນອນ ມີຄວາມບໍ່ຜັນປ່ຽນໄປເປັນທຳມະດາ ລວມຄວາມວ່າ ສະພາວະນັ້ນອັນອັນໃດນຳໄປບໍ່ໄດ້ ບໍ່ກຳເຣີບ

ຄຳວ່າ ໃດ ໃນຄຳວ່າ ສະພາວະໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້ ໄດ້ແກ່ ນິບພານ

ຄຳວ່າ ບໍ່ມີອັນໃດ ໆ ຯລຯ ປຽບໄດ້ ໄດ້ແກ່ ບໍ່ມີອັນໃດປຽບໄດ້ ຄື ບໍ່ມີຂໍ້ປຽບທຽບ ບໍ່ມີສິ່ງສະເໝີເໝືອນ ບໍ່ມີສ່ວນປຽບທຽບ ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້

ຄຳວ່າ ບ່ອນໃດ ໄດ້ແກ່ ບ່ອນໃດ ຄື ໃນບ່ອນໃດ ສະຖານທີ່ໃດ ໆ ພາຍໃນ ພາຍນອກ ຫຼື ທັງພາຍໃນແລະພາຍນອກ ລວມຄວາມວ່າ ສະພາວະໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້

ຄຳວ່າ ແນ່ນອນ ໃນຄຳວ່າ ຂ້າພຣະອົງຈັກເຖິງສະພາວະນັ້ນແນ່ນອນ ຄວາມສົງໄສໃນສະພາວະນັ້ນບໍ່ມີແກ່ຂ້າພຣະອົງ ອະທິບາຍວ່າ ເປັນຄຳກ່າວໂນດຽວ ເປັນຄຳກ່າວໂດຍບໍ່ສົງໄສ ເປັນຄຳກ່າວໂດຍບໍ່ເຄືອບແຄງ ເປັນຄຳກ່າວໂດຍບໍ່ເປັນ ໒ ໂນ ເປັນຄຳກ່າວໂດຍບໍ່ເປັນ ໒ ຢ່າງ ເປັນຄຳກ່າວໂດຍຮັດກຸມ ເປັນຄຳກ່າວໂດຍບໍ່ຜິດ ໂດຍບໍ່ພາດ ຄຳວ່າ ແນ່ນອນ ນີ້ເປັນຄຳກ່າວທີ່ກຳນົດໄວ້ແນ່ແລ້ວ

ຄຳວ່າ ຂ້າພຣະອົງຈັກເຖິງ ໄດ້ແກ່ ຈັກເຖິງ ຄື ຈັກບັນລຸ ຈັກຖືກຕ້ອງ ຈັກເຮັດໃຫ້ແຈ້ງ ລວມຄວາມວ່າ ຂ້າພຣະອົງຈັກເຖິງສະພາວະນັ້ນແນ່ນອນ

ຄຳວ່າ ໃນສະພາວະນັ້ນ ໃນຄຳວ່າ ຄວາມສົງໄສ ໃນສະພາວະນັ້ນບໍ່ມີແກ່ຂ້າພຣະອົງ ອະທິບາຍວ່າ ຄວາມສົງໄສ ຄື ຄວາມລັງເລ ຄວາມສອງຈິດສອງໃຈ ຄວາມແຄງໃຈໃນນິບພານ

ບໍ່ມີ ຄື ບໍ່ມີຢູ່ ບໍ່ຜາກົດ ຫາບໍ່ໄດ້ ໄດ້ແກ່ ລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ

ລວມຄວາມວ່າ ຂ້າພຣະອົງຈັກເຖິງສະພາວະນັ້ນແນ່ນອນ ຄວາມສົງໄສໃນສະພາວະນັ້ນ ບໍ່ມີແກ່ຂ້າພຣະອົງ

ຄຳວ່າ ຂໍພຣະອົງໂຜດຊົງຈຳຂ້າພຣະອົງໄວ້ ຯລຯ ດ້ວຍປະການແນວນີ້ແລ

ໃນຄຳວ່າ ຂໍພຣະອົງໂຜດຊົງຈຳຂ້າພຣະອົງວ່າ ເປັນຜູ້ມີຈິດນ້ອມໄປໃນສະພາວະນັ້ນ ແລ້ວ ດ້ວຍປະການແນວນີ້ແລ ໄດ້ແກ່ ຂໍພຣະອົງໂຜດເຂົ້າໄປກຳນົດຂ້າພຣະອົງ ດ້ວຍປະການ ແນວນີ້

ຄຳວ່າ ເປັນຜູ້ມີຈິດນ້ອມໄປໃນສະພາວະນັ້ນແລ້ວ ອະທິບາຍວ່າ ເປັນຜູ້ມີຈິດເອນໄປໃນ ນິບພານແລ້ວ ໂອນໄປໃນນິບພານແລ້ວ ໂນ້ມໄປໃນນິບພານແລ້ວ ນ້ອມໃຈໄປໃນນິບພານແລ້ວ ລວມຄວາມວ່າ ຂໍພຣະອົງໂຜດຊົງຈຳຂ້າພຣະອົງວ່າ ເປັນຜູ້ມີຈິດນ້ອມໄປໃນສະພາວະນັ້ນແລ້ວ ດ້ວຍປະການແນວນີ້ແລ ດ້ວຍເຫດນັ້ນ ພຣະປິງຄິຍະເຖຣະຈຶ່ງຂາບທູນວ່າ

ສະພາວະໃດບໍ່ມີອັນໃດ ໆ ບ່ອນໃດປຽບໄດ້
ສະພາວະນັ້ນອັນອັນໃດນຳໄປບໍ່ໄດ້ ບໍ່ກຳເຣີບ
ຂ້າພຣະອົງຈັກເຖິງສະພາວະນັ້ນແນ່ນອນ
ຄວາມສົງໄສໃນສະພາວະນັ້ນບໍ່ມີແກ່ຂ້າພຣະອົງ
ຂໍພຣະອົງໂຜດຊົງຈຳຂ້າພຣະອົງວ່າ
ເປັນຜູ້ມີຈິດນ້ອມໄປໃນສະພາວະນັ້ນແລ້ວ ດ້ວຍປະການແນວນີ້ແລ

**ປາຣາຍະນານຸຄີຕິຄາຖານິດເທດທີ ໑໘ ຈົບ**

**ປາຣາຍະນະວັກ ຈົບບໍລິບູນ**

# ໗. ຂັຄຄະວິສານະສູດຕະນິດເທດ

## ປະຖະມະວັກ

### ວ່າດ້ວຍການປະພຶດຢູ່ຜູ້ດຽວເໝືອນນໍແຮດ

[໑໘໑] (ພຣະປັດເຈກສໍາພຸດທະເຈົ້າກ່າວວ່າ)

ບຸກຄົນຍົກໂທດໃນສັດທຸກຈໍາພວກ
ບໍ່ບຽດບຽນສັດໜຶ່ງສັດໃດໃນບັນດາສັດເຫຼົ່ານັ້ນ
ບໍ່ຕ້ອງການບຸດ (ແລ້ວ) ຈະເພິ່ງຕ້ອງການສະຫາຍມາເຮັດຫຍັງນໍ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໑)

ຄໍາວ່າ ທຸກຈໍາພວກ ໃນຄໍາວ່າ ບຸກຄົນຍົກໂທດໃນສັດທຸກຈໍາພວກ ອະທິບາຍວ່າ ທຸກສິ່ງໂດຍອາການທັງໝົດ ທຸກຢ່າງ ບໍ່ເຫຼືອ ບໍ່ມີສ່ວນເຫຼືອ ໂດຍປະການທັງປວງ ຄໍາວ່າ ທຸກຈໍາພວກ ນີ້ ເປັນຄໍາກ່າວລວມ ໆ ໄວ້ທັງໝົດ

ຄໍາວ່າ ໃນສັດ ໄດ້ແກ່ ສັດທີ່ມັກສະດຸ້ງ ແລະສັດທີ່ໝັ້ນຄົງ ຮຽກວ່າສັດ

ຄໍາວ່າ ຜູ້ສະດຸ້ງ ອະທິບາຍວ່າ ເຫຼົ່າສັດຍັງລະຕັນຫາອັນເຮັດໃຫ້ສະດຸ້ງບໍ່ໄດ້ ຍັງລະໄພແລະຄວາມຢ້ານກົວບໍ່ໄດ້ ຍ້ອນເຫດໃດ ສັດເຫຼົ່ານັ້ນ ຈຶ່ງຮຽກວ່າຜູ້ສະດຸ້ງ

ສັດເຫຼົ່ານັ້ນຍັງສະດຸ້ງ ຄື ເກງກົວ ຫວາດກົວ ຢ້ານກົວ ເຖິງຄວາມສະດຸ້ງ ຍ້ອນເຫດນັ້ນ ສັດເຫຼົ່ານັ້ນ ຈຶ່ງຮຽກວ່າ ຜູ້ສະດຸ້ງ

ຄໍາວ່າ ຜູ້ໝັ້ນຄົງ ອະທິບາຍວ່າ ເຫຼົ່າສັດທີ່ລະຕັນຫາອັນເຮັດໃຫ້ສະດຸ້ງໄດ້ແລ້ວ ລະໄພແລະຄວາມຢ້ານກົວໄດ້ແລ້ວ ຍ້ອນເຫດໃດ ສັດເຫຼົ່ານັ້ນ ຈຶ່ງຮຽກວ່າຜູ້ໝັ້ນຄົງ

ສັດເຫຼົ່ານັ້ນບໍ່ສະດຸ້ງ ບໍ່ເກງກົວ ບໍ່ຫວາດກົວ ບໍ່ຢ້ານກົວ ບໍ່ເຖິງຄວາມສະດຸ້ງ ຍ້ອນເຫດນັ້ນ ສັດເຫຼົ່ານັ້ນ ຈຶ່ງຮຽກວ່າ ຜູ້ໝັ້ນຄົງ

ຄໍາວ່າ ໂທດ ໄດ້ແກ່ ໂທດ ໓ ຢ່າງ ຄື

໑. ໂທດທາງກາຍ
໒. ໂທດທາງວາຈາ
໓. ໂທດທາງໃຈ

ກາຍທຸດຈະຣິດ ໓ ຢ່າງ ຊື່ວ່າ ໂທດທາງກາຍ
ວະຈີທຸດຈະຣິດ ໔ ຢ່າງ ຊື່ວ່າ ໂທດທາງວາຈາ
ມະໂນທຸດຈະຣິດ ໓ ຢ່າງ ຊື່ວ່າ ໂທດທາງໃຈ

ຄຳວ່າ ບຸກຄົນຍົກໂທດໃນສັດທຸກຈຳພວກ ອະທິບາຍວ່າ ຍົກ ຄື ຖິ້ມ ປົງ ປົດ ປະຖິ້ມ ຣະງັບໂທດໃນສັດທຸກຈຳພວກ ລວມຄວາມວ່າ ບຸກຄົນຍົກໂທດໃນສັດທຸກຈຳພວກ

ຄຳວ່າ ບໍ່ບຽດບຽນສັດໜຶ່ງສັດໃດໃນບັນດາສັດເຫຼົ່ານັ້ນ ອະທິບາຍວ່າ ບໍ່ບຽດບຽນສັດ ແມ່ນແຕ່ຜູ້ດຽວ ດ້ວຍຝ່າມື ກ້ອນດິນ ທ່ອນໄມ້ ອາວຸດ ຕອງໂຊ່ ຫຼື ເຊືອກ ບໍ່ບຽດບຽນສັດແມ່ນ ທຸກຈຳພວກ ດ້ວຍຝ່າມື ກ້ອນດິນ ທ່ອນໄມ້ ອາວຸດ ຕອງໂຊ່ ຫຼື ເຊືອກ ລວມຄວາມວ່າ ບໍ່ບຽດ ບຽນສັດໜຶ່ງສັດໃດໃນບັນດາສັດເຫຼົ່ານັ້ນ

ຄຳວ່າ ບໍ່ ໃນຄຳວ່າ ບໍ່ຕ້ອງການບຸດ (ແລ້ວ) ຈະເພິ່ງຕ້ອງການສະຫາຍມາເຮັດຫຍັງນໍ ເປັນຄຳປະຕິເສດ

ຄຳວ່າ ບຸດ ໄດ້ແກ່ ບຸດ ໔ ຈຳພວກ ຄື

໑. ບຸດເກີດຈາກຕົນ
໒. ບຸດເກີດໃນເຂດ
໓. ບຸດທີ່ເຂົາໃຫ້
໔. ບຸດທີ່ຢູ່ໃນສຳນັກ

ຄຳວ່າ ສະຫາຍ ອະທິບາຍວ່າ ການມາສະບາຍ ການໄປສະບາຍ ການໄປການມາສະ ບາຍ ການຢືນສະບາຍ ການນັ່ງສະບາຍ ການນອນສະບາຍ ການທັກທາຍສະບາຍ ການ ສົນທະນາສະບາຍ ການເຈຣະຈາສະບາຍ ການສົນທາປາໄສສະບາຍກັບຊົນເຫຼົ່າໃດ ຊົນເຫຼົ່ານັ້ນ ຮຽກວ່າ ສະຫາຍ

ຄຳວ່າ ບໍ່ຕ້ອງການບຸດ (ແລ້ວ) ຈະເພິ່ງຕ້ອງການສະຫາຍມາເຮັດຫຍັງນໍ ອະທິບາຍວ່າ ບໍ່ຕ້ອງການ ຄື ບໍ່ຍິນດີ ບໍ່ປາຖະໜາ ບໍ່ມຸ້ງໝາຍ ບໍ່ມຸ້ງຫວັງບຸດເລີຍ ເພິ່ງຕ້ອງການ ຄື ເພິ່ງຍິນ ດີ ເພິ່ງປາຖະໜາ ເພິ່ງມຸ້ງໝາຍ ເພິ່ງມຸ້ງຫວັງມິດ ເພື່ອນ ໝູ່ ຫຼື ສະຫາຍມາເຮັດຫຍັງນໍ ລວມ ຄວາມວ່າ ບໍ່ຕ້ອງການບຸດ (ແລ້ວ) ຈະເພິ່ງຕ້ອງການສະຫາຍມາເຮັດຫຍັງນໍ

## ວ່າດ້ວຍພຣະປັດເຈກສຳພຸດທະເຈົ້າຊື່ວ່າຜູ້ດຽວ

ຄຳວ່າ ຜູ້ດຽວ ໃນຄຳວ່າ ເພິ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ ອະທິບາຍວ່າ
ພຣະປັດເຈກສຳພຸດທະເຈົ້າຊື່ວ່າຜູ້ດຽວ ຍ້ອນສ່ວນແຫ່ງການບັນພະຊາ
ຊື່ວ່າຜູ້ດຽວ ຍ້ອນອະທິບາຍວ່າ ບໍ່ມີເພື່ອນ
ຊື່ວ່າຜູ້ດຽວ ຍ້ອນອະທິບາຍວ່າ ລະຕັນຫາໄດ້
ທ່ານປາສະຈາກຣາຄະໂດຍບໍ່ເຫຼືອ ຈຶ່ງຊື່ວ່າຜູ້ດຽວ
ປາສະຈາກໂທສະໂດຍບໍ່ເຫຼືອ ຈຶ່ງຊື່ວ່າຜູ້ດຽວ
ປາສະຈາກໂມຫະໂດຍບໍ່ເຫຼືອ ຈຶ່ງຊື່ວ່າຜູ້ດຽວ
ປາສະຈາກກິເລດໂດຍບໍ່ເຫຼືອ ຈຶ່ງຊື່ວ່າຜູ້ດຽວ
ໄປເຖິງທາງສາຍເອກແລ້ວ ຈຶ່ງຊື່ວ່າຜູ້ດຽວ

ຕັດສະຣູ້ອະນຸດຕະຣະປັດເຈກສຳໂພທິຍານ ລຳພັງຜູ້ດຽວ ຈຶ່ງຊື່ວ່າຜູ້ດຽວ

ພຣະປັດເຈກສຳພຸດທະເຈົ້າ ຊື່ວ່າຜູ້ດຽວ ຍ້ອນສ່ວນແຫ່ງການບັນພະຊາ ເປັນແນວໃດ

ຄື ພຣະປັດເຈກສຳພຸດທະເຈົ້ານັ້ນ ຕັດຄວາມກັງວົນໃນການຄອງເຮືອນທັງໝົດ ຕັດຄວາມກັງວົນດ້ວຍບຸດ ແລະພັນລະຍາ ຄວາມກັງວົນດ້ວຍຍາດ ຄວາມກັງວົນດ້ວຍການສັ່ງສົມ ແຖຜົມແລະໜວດ ຄອງຜ້າກາສະວະ ອອກບວດເປັນບັນພະຊິດ ເຂົ້າເຖິງຄວາມເປັນຜູ້ບໍ່ມີກັງວົນ ເປັນຜູ້ດຽວ ປະພຶດ ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ດຳລົງຊີວິດໃຫ້ດຳເນີນໄປ ດັ່ງນັ້ນພຣະປັດເຈກສຳພຸດທະເຈົ້າ ຈຶ່ງຊື່ວ່າ ຜູ້ດຽວ ຍ້ອນສ່ວນແຫ່ງການບັນພະຊາ ເປັນແນວນີ້

ພຣະປັດເຈກສຳພຸດທະເຈົ້າຊື່ວ່າ ຜູ້ດຽວ ຍ້ອນອະທິບາຍວ່າບໍ່ມີເພື່ອນ ເປັນແນວໃດ?

ຄື ພຣະປັດເຈກສຳພຸດທະເຈົ້ານັ້ນ ບວດແລ້ວແນວນີ້ ໃຊ້ສອຍເສນາສະນະ ທີ່ເປັນປ່າທຶບ ແລະປ່າເລົ່າອັນສະຫງັດ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນບ່ອນຫຼີບຫຼີກຕາມລຳພັງຜູ້ດຽວ ທ່ານໄປຜູ້ດຽວ ຢືນຜູ້ດຽວ ນັ່ງຜູ້ດຽວ ນອນຜູ້ດຽວ ເຂົ້າສູ່ໝູ່ບ້ານເພື່ອບິນທະບາດຜູ້ດຽວ ຍ່າງຜູ້ດຽວ ກັບຜູ້ດຽວ ນັ່ງໃນບ່ອນລັບຜູ້ດຽວ ອະທິຖານຈົງກົມຜູ້ດຽວ ປະພຶດ ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປຜູ້ດຽວ ດັ່ງນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນ ຈຶ່ງຊື່ວ່າຜູ້ດຽວ ຍ້ອນອະທິບາຍວ່າບໍ່ມີເພື່ອນ

ພຣະປັດເຈກສຳພຸດທະເຈົ້າຊື່ວ່າຜູ້ດຽວ ຍ້ອນອະທິບາຍວ່າ ລະຕັນຫາໄດ້ ເປັນແນວໃດ?

ຄື ພຣະປັດເຈກສຳພຸດທະເຈົ້ານັ້ນ ເປັນຜູ້ດຽວ ບໍ່ມີເພື່ອນສອງແນວນີ້ ບໍ່ຜະໝາດ ມີຄວາມພຽນ ມີໃຈເດັດດ່ຽວ (ອຸທິດກາຍແລະໃຈ) ຢູ່ ຕັ້ງຄວາມພຽນໄວ້ໜັກແໜ້ນ ກຳຈັດມານພ້ອມທັງເສນາຜູ້ຊົ່ວຮ້າຍເຊິ່ງກີດກັນມະຫາຊົນບໍ່ໃຫ້ຫຼຸດພົ້ນ ເປັນເຜົ່າພັນຂອງຜູ້ຜະໝາດ ລະບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ເຊິ່ງຕັນຫາທີ່ເປັນເໝືອນຕາໜ່າງ ຊ່ານໄປເກາະກ່ຽວໃນອາລົມ

ບຸຣຸດມີຕັນຫາເປັນເພື່ອນ ທ່ອງທ່ຽວໄປຕະຫຼອດການຍາວນານ
ຍ່ອມບໍ່ລ່ວງພົ້ນສັງສາຣະວັດທີ່ມີຄວາມເປັນແນວນີ້ ແລະຄວາມເປັນຢ່າງອື່ນ
ພິກຂຸຣູ້ໂທດນີ້ແລ້ວ ຮູ້ຕັນຫາເປັນເຫດໃຫ້ເກີດແຫ່ງທຸກ
ເພິ່ງເປັນຜູ້ບໍ່ມີຕັນຫາ ບໍ່ມີຄວາມຖືໝັ້ນ ມີສະຕິສຳປະຊັນຍະຢູ່

ພຣະປັດເຈກສຳພຸດທະເຈົ້າ ຊື່ວ່າຜູ້ດຽວ ຍ້ອນອະທິບາຍວ່າລະຕັນຫາໄດ້ ເປັນແນວນີ້

ພຣະປັດເຈກສຳພຸດທະເຈົ້າ ປາສະຈາກຣາຄະໂດຍບໍ່ເຫຼືອ ຊື່ວ່າ ຜູ້ດຽວ ເປັນແນວໃດ?

ຄື ພຣະປັດເຈກສຳພຸດທະເຈົ້າ ປາສະຈາກຣາຄະໂດຍບໍ່ເຫຼືອ ຍ້ອນເປັນຜູ້ລະຣາຄະໄດ້ແລ້ວ ຈຶ່ງຊື່ວ່າຜູ້ດຽວ ປາສະຈາກໂທສະໂດຍບໍ່ເຫຼືອ ຍ້ອນເປັນຜູ້ລະໂທສະໄດ້ແລ້ວ ຈຶ່ງຊື່ວ່າຜູ້

ດຽວ ປາສະຈາກໂມຫະໂດຍບໍ່ເຫຼືອ ຍ້ອນເປັນຜູ້ລະໂມຫະໄດ້ແລ້ວ ຈຶ່ງຊື່ວ່າຜູ້ດຽວ ປາສະຈາກກິເລດໂດຍບໍ່ເຫຼືອ ຍ້ອນເປັນຜູ້ລະເຫຼົ່າກິເລດໄດ້ແລ້ວ ຈຶ່ງຊື່ວ່າຜູ້ດຽວ ເປັນແນວນີ້

ພຣະປັດເຈກສຳພຸດທະເຈົ້າໄປເຖິງທາງສາຍເອກແລ້ວ ຈຶ່ງຊື່ວ່າຜູ້ດຽວ ເປັນແນວໃດ?

ຄື ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ຕັດຮຽກວ່າ ທາງສາຍເອກ

(ສົມຈິງດັ່ງຄາຖາປະພັນວ່າ)

ພຣະປັດເຈກສຳພຸດທະເຈົ້າ ຜູ້ເຫັນທຳອັນເປັນສ່ວນທີ່ສຸດສິ້ນແຫ່ງຊາດ
ອະນຸເຄາະດ້ວຍຄວາມເກື້ອກູນ
ຮູ້ຈັກມັກອັນເປັນທາງສາຍເອກ
ເຊິ່ງເຫຼົ່າບັນດິດໄດ້ຂ້າມມາກ່ອນແລ້ວ
ຈັກຂ້າມ ແລະກຳລັງຂ້າມໂອຄະໄດ້ດ້ວຍມັກນີ້

ພຣະປັດເຈກສຳພຸດທະເຈົ້າໄປເຖິງທາງສາຍເອກແລ້ວ ຈຶ່ງຊື່ວ່າຜູ້ດຽວ ເປັນແນວນີ້

## ວ່າດ້ວຍປະຕິດຈະສະມຸບບາດ

ພຣະປັດເຈກສຳພຸດທະເຈົ້າຕັດສະຣູ້ ອະນຸດຕະຣະປັດເຈກສຳໂພທິຍານລຳພັງຜູ້ດຽວ ຈຶ່ງຊື່ວ່າຜູ້ດຽວ ເປັນແນວໃດ

ຄື ຍານໃນມັກທັງ ໔ ປັນຍາ ປັນຍິນຊີ ປັນຍາພະລະ ທຳມະວິຈະຍະສຳໂພດຊົງ ວິມັງສາ ວິປັດສະນາ ສຳມາທິດຖິ ຮຽກວ່າ ໂພທິ ດ້ວຍປັດເຈກໂພທິຍານນັ້ນ ພຣະປັດເຈກສຳພຸດທະເຈົ້າຕັດສະຣູ້ວ່າ ສັງຂານທັງປວງ ບໍ່ທ່ຽງໆຯລຯ ສັງຂານທັງປວງເປັນທຸກຯລຯ ທຳທັງປວງເປັນອະນັດຕາ ຕັດສະຣູ້ວ່າ

| | |
|---|---|
| ຍ້ອນອະວິດຊາເປັນປັດໄຈ | ສັງຂານຈຶ່ງມີ |
| ຍ້ອນສັງຂານເປັນປັດໄຈ | ວິນຍານຈຶ່ງມີ |
| ຍ້ອນວິນຍານເປັນປັດໄຈ | ນາມຣູບຈຶ່ງມີ |
| ຍ້ອນນາມຣູບເປັນປັດໄຈ | ສາລະຍະຕະນະຈຶ່ງມີ |
| ຍ້ອນສາລະຍະຕະນະເປັນປັດໄຈ | ຜັດສະຈຶ່ງມີ |
| ຍ້ອນຜັດສະເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນເວທະນາເປັນປັດໄຈ | ຕັນຫາຈຶ່ງມີ |
| ຍ້ອນຕັນຫາເປັນປັດໄຈ | ອຸປາທານຈຶ່ງມີ |

ຍ້ອນອຸປາທານເປັນປັດໃຈ ພົບຈຶ່ງມີ
ຍ້ອນພົບເປັນປັດໃຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໃຈ ຊະຣາມໍຣະນະຈຶ່ງມີ

ຕັດສະຣູ້ວ່າ ຍ້ອນອະວິດຊາດັບ ສັງຂານຈຶ່ງດັບ

ຍ້ອນສັງຂານດັບ ວິນຍານຈຶ່ງດັບ
ຍ້ອນວິນຍານດັບ ນາມຮູບຈຶ່ງດັບ
ຍ້ອນນາມຮູບດັບ ສາລະຍະຕະນະຈຶ່ງດັບ
ຍ້ອນສາລະຍະຕະນະດັບ ຜັດສະຈຶ່ງດັບ
ຍ້ອນຜັດສະດັບ ເວທະນາຈຶ່ງດັບ
ຍ້ອນເວທະນາດັບ ຕັນຫາຈຶ່ງດັບ
ຍ້ອນຕັນຫາດັບ ອຸປາທານຈຶ່ງດັບ
ຍ້ອນອຸປາທານດັບ ພົບຈຶ່ງດັບ
ຍ້ອນພົບດັບ ຊາດຈຶ່ງດັບ
ຍ້ອນຊາດດັບ ຊະຣາມໍຣະນະຈຶ່ງດັບ

ຕັດສະຣູ້ວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ເຫຼົ່ານີ້ອາສະວະ ນີ້ອາສະວະສະມຸໄທ ນີ້ອາສະວະນິໂຣທະ ນີ້ອາສະວະນິໂຣທະຄາມີນີປະຕິປະທາ ເຫຼົ່ານີ້ຄືທຳທີ່ຄວນຮູ້ຍິ່ງ ເຫຼົ່ານີ້ຄືທຳທີ່ຄວນລະ ເຫຼົ່ານີ້ຄືທຳທີ່ຄວນເຮັດໃຫ້ແຈ້ງ ເຫຼົ່ານີ້ຄືທຳທີ່ຄວນຈະເລີນ ຕັດສະຣູ້ເຫດເກີດ ເຫດດັບ ຄຸນ ໂທດ ແລະການສະລັດຖິ້ມ ຜັດສາຍະຕະນະ ໖ ຕັດສະຣູ້ເຫດເກີດ ເຫດດັບ ຄຸນ ໂທດ ແລະການສະລັດຖິ້ມອຸປາທານຂັນ ໕ ຕັດສະຣູ້ເຫດເກີດ ເຫດດັບ ຄຸນ ໂທດ ແລະການສະລັດຖິ້ມມະຫາພູຕະຮູບ ໔

ຕັດສະຣູ້ວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ອີກໄນໜຶ່ງ ທຳມະຊາດຢ່າງໃດກໍຕາມທີ່ຄວນຕັດສະຣູ້ ຄວນຕັດສະຣູ້ຕາມລຳດັບ ຄວນຕັດສະຣູ້ສະເພາະ ຄວນຕັດສະຣູ້ດ້ວຍດີ ຄວນບັນລຸ ຄວນຖືກຕ້ອງ ຄວນເຮັດໃຫ້ແຈ້ງ ພຣະປັດເຈກສຳພຸດທະເຈົ້າໄດ້ຕັດສະຣູ້ ຕັດສະຣູ້ຕາມລຳດັບ ຕັດສະຣູ້ສະເພາະ ຕັດສະຣູ້ດ້ວຍດີ ຕັດສະຣູ້ໂດຍຊອບ ບັນລຸຖືກຕ້ອງ ເຮັດໃຫ້ແຈ້ງທຳມະຊາດນັ້ນທັງໝົດດ້ວຍປັດເຈກໂພທິຍານນັ້ນ ພຣະປັດເຈກສຳພຸດທະເຈົ້າຕັດສະຣູ້ອະນຸດຕະຣະປັດເຈກສຳໂພທິຍານລຳພັງຜູ້ດຽວ ຈຶ່ງຊື່ວ່າຜູ້ດຽວເປັນແນວນີ້

## ວ່າດ້ວຍຄວາມປະພຶດ ๙ ຢ່າງ

ຄຳວ່າ ເພິ່ງປະພຶດ ອະທິບາຍວ່າ ຄວາມປະພຶດ ๙ ຢ່າງ ໄດ້ແກ່

໑. ຄວາມປະພຶດໃນອິລິຍາບົດ
໒. ຄວາມປະພຶດໃນອາຍະຕະນະ
໓. ຄວາມປະພຶດໃນສະຕິ
໔. ຄວາມປະພຶດໃນສະມາທິ
໕. ຄວາມປະພຶດໃນຍານ
໖. ຄວາມປະພຶດໃນມັກ
໗. ຄວາມປະພຶດໃນຜົນ
๙. ຄວາມປະພຶດເພື່ອປະໂຫຍດແກ່ໂລກ

ຄຳວ່າ ຄວາມປະພຶດໃນອິລິຍາບົດ ໄດ້ແກ່ ຄວາມປະພຶດໃນອິລິຍາບົດ ໔

ຄຳວ່າ ຄວາມປະພຶດໃນອາຍະຕະນະ ໄດ້ແກ່ ຄວາມປະພຶດໃນອາຍະຕະນະພາຍໃນ ແລະອາຍະຕະນະພາຍນອກຢ່າງລະ ໖

ຄຳວ່າ ຄວາມປະພຶດໃນສະຕິ ໄດ້ແກ່ ຄວາມປະພຶດໃນສະຕິປັດຖານ ໔

ຄຳວ່າ ຄວາມປະພຶດໃນສະມາທິ ໄດ້ແກ່ ຄວາມປະພຶດໃນຊານ ໔

ຄຳວ່າ ຄວາມປະພຶດໃນຍານ ໄດ້ແກ່ ຄວາມປະພຶດໃນອະຣິຍະສັດ ໔

ຄຳວ່າ ຄວາມປະພຶດໃນມັກ ໄດ້ແກ່ ຄວາມປະພຶດໃນອະຣິຍະມັກ ໔

ຄຳວ່າ ຄວາມປະພຶດໃນຜົນ ໄດ້ແກ່ ຄວາມປະພຶດໃນສາມັນຍະຜົນ ໔

ຄຳວ່າ ຄວາມປະພຶດເພື່ອປະໂຫຍດແກ່ໂລກ ໄດ້ແກ່ ຄວາມປະພຶດໃນພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ຄວາມປະພຶດໃນພຣະປັດເຈກສຳພຸດທະເຈົ້າບາງສ່ວນ ຄວາມປະພຶດໃນພຣະສາວົກບາງສ່ວນ ຄວາມປະພຶດໃນອິລິຍາບົດມີແກ່ຜູ້ຕັ້ງຕົນໄວ້ຊອບ ຄວາມປະພຶດໃນອາຍະຕະນະມີແກ່ຜູ້ສັງລວມອິນຊີ ຄວາມປະພຶດໃນສະຕິມີແກ່ຜູ້ທີ່ຢູ່ດ້ວຍຄວາມບໍ່ຜະໝາດ ຄວາມປະພຶດໃນສະມາທິມີແກ່ຜູ້ຂວນຂວາຍໃນອະທິຈິດ ຄວາມປະພຶດໃນຍານມີແກ່ຜູ້ບັນລຸປັນຍາເຄື່ອງຕັດສະຣູ້ ຄວາມປະພຶດໃນມັກມີແກ່ຜູ້ປະຕິບັດຊອບ ຄວາມປະພຶດໃນຜົນມີແກ່ຜູ້ໄດ້ບັນລຸຜົນ ແລະຄວາມປະພຶດເພື່ອປະໂຫຍດແກ່ໂລກມີແກ່ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະປັດເຈກສຳພຸດທະເຈົ້າບາງສ່ວນ ພຣະສາວົກບາງສ່ວນເຫຼົ່ານີ້ ຄື ຄວາມປະພຶດ ๙ ຢ່າງ

ອີກໄນໜຶ່ງ ຄວາມປະພຶດ ๙ ຢ່າງ ຄື

໑. ເມື່ອນ້ອມໃຈເຊື່ອ ຊື່ວ່າຍ່ອມປະພຶດດ້ວຍ ສັດທາ
໒. ເມື່ອປະຄອງໃຈ ຊື່ວ່າຍ່ອມປະພຶດດ້ວຍ ວິຣິຍະ
໓. ເມື່ອຕັ້ງຈິດໝັ້ນ ຊື່ວ່າຍ່ອມປະພຶດດ້ວຍ ສະຕິ
໔. ເມື່ອກະທຳຄວາມບໍ່ຟຸ້ງຊ່ານ ຊື່ວ່າຍ່ອມປະພຶດດ້ວຍ ສະມາທິ

໕. ເມື່ອຮູ້ແຈ້ງ ຊື່ວ່າຍ່ອມປະພຶດດ້ວຍ ປັນຍາ
໖. ເມື່ອຮູ້ແຈ້ງ ຊື່ວ່າຍ່ອມປະພຶດດ້ວຍ ວິນຍານ
໗. ເມື່ອມະນະສິການວ່າ ກຸສົນທຳທັງຫຼາຍຍ່ອມດຳເນີນໄປແກ່ຜູ້ປະຕິບັດແນວນີ້ ຊື່ວ່າຍ່ອມປະພຶດດ້ວຍຄວາມປະພຶດໃນອາຍະຕະນະ
໘. ເມື່ອມະນະສິການວ່າ ຜູ້ປະຕິບັດແນວນີ້ ຍ່ອມບັນລຸຄຸນວິເສດ ຊື່ວ່າຍ່ອມປະພຶດໃນຄວາມປະພຶດດ້ວຍຄຸນວິເສດ

ເຫຼົ່ານີ້ ຊື່ວ່າຄວາມປະພຶດ ໘ ຢ່າງ
ອີກໄນໜຶ່ງ ຄວາມປະພຶດ ໘ ຢ່າງ ຄື

໑. ຄວາມປະພຶດສຳມາທິດຖິ ຊື່ວ່າທັດສະນະຈະຣິຍາ (ຄວາມປະພຶດດ້ວຍຄວາມເຫັນ)
໒. ຄວາມປະພຶດສຳມາສັງກັບປະ ຊື່ວ່າອະພິນິໂຣທະນະຈະຣິຍາ (ຄວາມປະພຶດດ້ວຍການປູກຝັງຄວາມດຳຣິ)
໓. ຄວາມປະພຶດສຳມາວາຈາ ຊື່ວ່າປະຣິກຄະຫະຈະຣິຍາ (ຄວາມປະພຶດການກຳນົດສັງລວມວະຈີ ໔ ຢ່າງ)
໔. ຄວາມປະພຶດສຳມາກຳມັນຕະ ຊື່ວ່າ ສະມຸດຖານະຈະຣິຍາ (ຄວາມປະພຶດດ້ວຍຄວາມໝັ້ນ)
໕. ຄວາມປະພຶດສຳມາອາຊີວະ ຊື່ວ່າໂວທານະຈະຣິຍາ (ຄວາມປະພຶດດ້ວຍຄວາມຜ່ອງແຜ້ວ)
໖. ຄວາມປະພຶດສຳມາວາຍາມະ ຊື່ວ່າປັກຄະຫະຈະຣິຍາ (ຄວາມປະພຶດດ້ວຍການປະຄອງຄວາມພຽນ)
໗. ຄວາມປະພຶດສຳມາສະຕິ ຊື່ວ່າອຸປັດຖານະຈະຣິຍາ (ຄວາມປະພຶດດ້ວຍການເຂົ້າໄປຕັ້ງສະຕິ)
໘. ຄວາມປະພຶດສຳມາສະມາທິ ຊື່ວ່າອະວິກເຂປະຈະຣິຍາ (ຄວາມປະພຶດດ້ວຍຄວາມບໍ່ຟຸ້ງຊ່ານ)

ເຫຼົ່ານີ້ ຊື່ວ່າ ຄວາມປະພຶດ ໘ ຢ່າງ

ຄຳວ່າ ເໝືອນນໍແຮດ ອະທິບາຍວ່າ ທຳມະດາແຮດ ຍ່ອມມີນໍດຽວ ບໍ່ມີນໍທີ່ສອງ ສັນໃດ ພຣະປັດເຈກສຳພຸດທະເຈົ້ານັ້ນ ກໍເໝືອນນໍແຮດສັນນັ້ນ ຄື ເຊັ່ນດຽວກັບນໍແຮດນັ້ນ ປຽບໄດ້ກັບນໍແຮດນັ້ນ

ຣົດເຄັມຈັດ ຄົນເວົ້າກັນວ່າເໝືອນເກືອ ຣົດຂົມຈັດ ເວົ້າກັນວ່າເໝືອນບີ ຣົດຫວານຈັດ ເວົ້າກັນວ່າເໝືອນນ້ຳເຜີ້ງ ຮ້ອນຈັດ ເວົ້າກັນວ່າເໝືອນໄຟ ເຢັນຈັດ ເວົ້າກັນວ່າເໝືອນນ້ຳກ້ອນ

ປະລິມານນ້ຳມີຫຼາຍ ເວົ້າກັນວ່າເໝືອນທະເລ ພຣະສາວົກຜູ້ບັນລຸອະພິນຍາ ແລະພະລະອັນຍິ່ງໃຫຍ່ ເວົ້າກັນວ່າ ເໝືອນພຣະສາດສະດາ ສັນໃດ ພຣະປັດເຈກສຳພຸດທະເຈົ້ານັ້ນກໍສັນນັ້ນ ເໝືອນນໍແຮດນັ້ນ ເປັນເຊັ່ນດຽວກັບນໍແຮດນັ້ນ ປຽບໄດ້ກັບນໍແຮດນັ້ນ ໃນຂໍ້ນັ້ນ ເປັນຜູ້ດຽວ ຄື ບໍ່ມີເພື່ອນ ພົ້ນຈາກເຄື່ອງຜູກພັນ ຍ່ອມປະພຶດ ຄື ຢູ່ ເຄື່ອນໄຫວ ເປັນໄປລ້ຽງຊີວິດ ດຳເນີນໄປຍັງຊີວິດໃຫ້ດຳເນີນໄປໂດຍຊອບ ໃນໂລກ ລວມຄວາມວ່າ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ບຸກຄົນຍົກໂທດໃນສັດທຸກຈຳພວກ
ບໍ່ບຽດບຽນສັດໜຶ່ງສັດໃດໃນບັນດາສັດເຫຼົ່ານັ້ນ
ບໍ່ຕ້ອງການບຸດ (ແລ້ວ) ຈະເພິ່ງຕ້ອງການສະຫາຍມາເຮັດຫຍັງນໍ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໘໘] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ຄວາມຮັກ ຍ່ອມມີແກ່ຜູ້ມີຄວາມກ່ຽວຂ້ອງ
ທຸກນີ້ ຍ່ອມເປັນໄປຕາມຄວາມຮັກ
ເຮົາເມື່ອເພ່ງເຫັນໂທດອັນເກີດຈາກຄວາມຮັກ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໘)

ຄຳວ່າ ຄວາມຮັກ ຍ່ອມມີແກ່ຜູ້ມີຄວາມກ່ຽວຂ້ອງ ອະທິບາຍວ່າ
ຄຳວ່າ ຄວາມກ່ຽວຂ້ອງ ໄດ້ແກ່ ຄວາມກ່ຽວຂ້ອງ ໒ ຢ່າງ ຄື

໑. ຄວາມກ່ຽວຂ້ອງຍ້ອນການເຫັນ
໒. ຄວາມກ່ຽວຂ້ອງຍ້ອນການໄດ້ຍິນ

ຄວາມກ່ຽວຂ້ອງຍ້ອນການເຫັນ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ເຫັນສະຕີຫຼືກຸມາຣີ ຜູ້ມີຮູບງາມ ໜ້າເບິ່ງ ໜ້າຊົມ ພຽບພ້ອມດ້ວຍຄວາມງາມແຫ່ງຜິວພັນຢ່າງຍິ່ງ ເມື່ອພົບເຫັນແລ້ວ ຍ່ອມແຍກຖືວ່າ ຜົມງາມ ໜ້າງາມ ຕາງາມ ຫູງາມ ດັງງາມ ຮິມຝີປາກງາມ ແຂ້ວງາມ ປາກງາມ ຄໍງາມ ນົມງາມ ເອິກງາມ ທ້ອງງາມ ແອວງາມ ຂາອ່ອນງາມ ແຂ່ງງາມ ມືງາມ ຕີນງາມ ນິ້ວງາມ ເລັບງາມ ຄື ເມື່ອພົບເຫັນແລ້ວ ກໍພໍໃຈ ພໍ່າເພີ້ເຖິງ ປາຖະໜາ ຕິດໃຈ ຜູກພັນດ້ວຍຄວາມກຳໜັດ ນີ້ຊື່ວ່າຄວາມກ່ຽວຂ້ອງຍ້ອນການເຫັນ

ຄວາມກ່ຽວຂ້ອງຍ້ອນການໄດ້ຍິນ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ໄດ້ຍິນວ່າ ໃນໝູ່ບ້ານ ຫຼື ນິຄົມຊື່ນັ້ນ ມີສະຕີ ຫຼື ກຸມາຣີ ຮູບງາມ ໜ້າເບິ່ງ ໜ້າຊົມ ພຽບພ້ອມດ້ວຍຄວາມງາມແຫ່ງຜິວພັນຢ່າງຍິ່ງ ເມື່ອໄດ້ຍິນ ໄດ້ຟັງແລ້ວກໍພໍໃຈ ພໍ່າເພີ້ເຖິງ ປາຖະໜາ ຕິດໃຈ ຜູກພັນດ້ວຍຄວາມກຳໜັດ ນີ້ຊື່ວ່າຄວາມກ່ຽວຂ້ອງຍ້ອນການໄດ້ຍິນ

ຄຳວ່າ ຄວາມຮັກ ໄດ້ແກ່ ຄວາມຮັກ ໒ ຢ່າງ ຄື (໑) ຄວາມຮັກດ້ວຍອຳນາດຕັນຫາ (໒) ຄວາມຮັກດ້ວຍອຳນາດທິດຖິ

ຄວາມຮັກດ້ວຍອຳນາດຕັນຫາ ເປັນແນວໃດ?

ຄື ວັດຖຸທີ່ເຮັດໃຫ້ເປັນເຂດ ເປັນແດນ ເປັນສ່ວນ ເປັນຜະແໜກ ກຳນົດຖືເອົາ ຍຶດຖືວ່າເປັນຂອງເຮົາດ້ວຍສັດສ່ວນແຫ່ງຕັນຫາມີປະມານເທົ່າໃດ ຍ່ອມຍຶດຖືວ່າເປັນຂອງເຮົາ ເຊິ່ງວັດຖຸມີປະມານເທົ່ານີ້ວ່າ ນີ້ຂອງເຮົາ ນັ້ນຂອງເຮົາ ເທົ່ານີ້ຂອງເຮົາ ຂອງເຮົາມີປະລິມານເທົ່ານີ້ ຮູບສຽງ ກິ່ນ ຣົດ ໂຜດຖັບພະ ເຄື່ອງປູລາດ ເຄື່ອງນຸ່ງຫົ່ມ ທາດຍິງຊາຍ ແບ້ ແກະໄກ່ ໝູ ຊ້າງງົວ ມ້າ ລາ ທີ່ນາ ທີ່ສວນ ເງິນ ຄຳ ບ້ານ ເຮືອນ ນິຄົມ ຣາດຊະທານີ ແຄວ້ນ ຊົນນະບົດກອງພົນຮົບ ຄັງຫຼວງ ແມ່ນມະຫາປະຖະພີທັງໝົດຍ່ອມຍຶດຖືວ່າເປັນຂອງເຮົາດ້ວຍອຳນາດຕັນຫາ ເຊິ່ງຈຳແນກໄດ້ ໑໐໘ ນີ້ຊື່ວ່າ ຄວາມຮັກດ້ວຍອຳນາດຕັນຫາ

ຄວາມຮັກດ້ວຍອຳນາດທິດຖິ ເປັນແນວໃດ?

ຄື ສັກກາຍະທິດຖິມີວັດຖຸ ໒໐ ມິດສາທິດຖິມີວັດຖຸ ໑໐ ອັນຕະຄາຫິກະທິດຖິມີວັດຖຸ ໑໐ ທິດຖິ ການຕົກຢູ່ໃນທິດຖິ ຄວາມຮົກທຶບຄືທິດຖິ ຄວາມກັນດານຄືທິດຖິ ສັ່ງນໜາມຄື ທິດຖິ ຄວາມດີ້ນຮົນຄືທິດຖິ ເຄື່ອງຜູກພັນຄືທິດຖິ ຄວາມຖື ຄວາມຖືໝັ້ນ ຄວາມຍຶດໝັ້ນ ຄວາມຍຶດໝັ້ນຖືໝັ້ນ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິເດຍຣະຖີ ຄວາມຖືຂັດແຍ່ງ ຄວາມຖືວິປະຣິດ ຄວາມຖືວິປະລາດ ຄວາມຖືຜິດ ຄວາມຖືໃນສິ່ງທີ່ບໍ່ເປັນຄວາມຈິງວ່າເປັນຈິງເຫັນປານນີ້ຈົນເຖິງທິດຖິ ໖໒ ນີ້ຊື່ວ່າຄວາມຮັກດ້ວຍອຳນາດທິດຖິ

ຄຳວ່າ ຄວາມຮັກ ຍ່ອມມີແກ່ຜູ້ມີຄວາມກ່ຽວຂ້ອງ ອະທິບາຍວ່າ ຍ້ອນຄວາມ ກ່ຽວຂ້ອງຍ້ອນການເຫັນເປັນປັດໄຈ ແລະຍ້ອນຄວາມກ່ຽວຂ້ອງຍ້ອນການໄດ້ຍິນເປັນປັດໄຈ ຄວາມຮັກດ້ວຍອຳນາດຕັນຫາ ແລະຄວາມຮັກດ້ວຍອຳນາດທິດຖິຍ່ອມມີ ຄື ມີຂຶ້ນ ເກີດ ເກີດຂຶ້ນ ບັງເກີດບັງເກີດຂຶ້ນ ຜາກົດ ລວມຄວາມວ່າ ຄວາມຮັກ ຍ່ອມມີແກ່ຜູ້ມີຄວາມກ່ຽວຂ້ອງ

ຄຳວ່າ ທຸກນີ້ ຍ່ອມເປັນໄປຕາມຄວາມຮັກ ອະທິບາຍວ່າ

ຄຳວ່າ ຄວາມຮັກ ໄດ້ແກ່ ຄວາມຮັກ ໒ ຢ່າງ ຄື (໑) ຄວາມຮັກດ້ວຍອຳນາດຕັນຫາ (໒) ຄວາມຮັກດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າ ຄວາມຮັກດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມຮັກດ້ວຍອຳນາດທິດຖິ

ຄຳວ່າ ທຸກນີ້ ຍ່ອມເປັນໄປ ອະທິບາຍວ່າ ຄົນບາງຄົນໃນໂລກນີ້ ປະພຶດທຸດຈະຣິດທາງກາຍ ປະພຶດທຸດຈະຣິດທາງວາຈາ ປະພຶດທຸດຈະຣິດທາງໃຈ ຂ້າສັດແດ່ ລັກຊັບແດ່ ຕັດປ່ອງຍ່ອງເບົາແດ່ ຂະໂມຍ ລັກ ຍົກເຄົ້າແດ່ ປຸ້ນບ້ານເຮືອນແດ່ ດັກຈີ້ໃນທາງປ່ຽວແດ່ ລະເມີດພັນລະຍາຂອງຜູ້ອື່ນແດ່ ເວົ້າຕົວະແດ່ ພວກຣາດຊະບຸຣຸດຈັບບຸກຄົນນັ້ນໄດ້ ຈຶ່ງທູນສະແດງແກ່ພຣະຣາຊາວ່າ ຂໍເດຊະ ຜູ້ນີ້ເປັນໂຈນ ປະພຶດຊົ່ວ ຂໍຈົ່ງຊົງລົງອາຍາຕາມທີ່ຊົງພຣະຣາດຊະປະສົງແກ່ບຸກຄົນນີ້ເທີ້ນ ພຣະຣາຊາຍ່ອມຊົງບໍຣິພາດບຸກຄົນນັ້ນ ຍ້ອນການບໍຣິພາດເປັນປັດໄຈເຂົາຍ່ອມສະເຫວີຍທຸກໂທມະນັດແດ່ ຄວາມຢ້ານ ທຸກແລະໂທມະນັດນີ້ຂອງເຂົາເກີດຈາກ ອັນໃດ ຄວາມຢ້ານນີ້ ເກີດແກ່ເຂົາ ຍ້ອນຄວາມຮັກເປັນປັດໄຈ ຍ້ອນຄວາມເພີດເພີນເປັນປັດໄຈ ຍ້ອນຣາຄະເປັນປັດໄຈ ແລະຍ້ອນຄວາມກຳໜັດດ້ວຍອຳນາດຄວາມເພີດເພີນເປັນປັດໄຈ

ພຣະຣາຊາບໍ່ຊົງພໍພຣະທະໄທແມ່ນພຽງເທົ່ານັ້ນ ຊົງໃຫ້ຈອງຈຳບຸກຄົນນັ້ນດ້ວຍເຄື່ອງຈອງຈຳຄືຂື່ຄາແດ່ ເຄື່ອງຈອງຈຳຄືເຊືອກແດ່ ເຄື່ອງຈອງຈຳຄືຕ່ອງໂຊ່ແດ່ ເຄື່ອງຈອງຈຳຄືຫວາຍແດ່ ເຄື່ອງຈອງຈຳຄືເຄືອເຂົາແດ່ ເຄື່ອງຈອງຈຳຄືຄຸກແດ່ ເຄື່ອງຈອງຈຳຄືເຮືອນຂັງແດ່ ເຄື່ອງຈອງຈຳຄືໝູ່ບ້ານແດ່ ເຄື່ອງຈອງຈຳຄືນິຄົມແດ່ ເຄື່ອງຈອງຈຳຄືເມືອງແດ່ ເຄື່ອງຈອງຈຳຄືຣັດແດ່ ເຄື່ອງຈອງຈຳຄືຊົນນະບົດແດ່ ໂດຍທີ່ສຸດ ຊົງມີພຣະຣາດຊະໂອງການວ່າ ພວກມັນອອກໄປຈາກບ່ອນນີ້ບໍ່ໄດ້ ບຸກຄົນນັ້ນຍ່ອມສະເຫວີຍທຸກ ແລະໂທມະນັດ ຍ້ອນຖືກຈອງຈຳເປັນປັດໄຈແດ່ ຄວາມຢ້ານ ທຸກ ແລະໂທມະນັດຂອງເຂົານີ້ ເກີດ ມາຈາກອັນໃດ ຄວາມຢ້ານນີ້ເກີດແກ່ເຂົາ ຍ້ອນຄວາມຮັກເປັນປັດໄຈ ຍ້ອນຄວາມເພີດເພີນເປັນປັດໄຈ ຍ້ອນຣາຄະເປັນປັດໄຈ ແລະຍ້ອນຄວາມກຳໜັດດ້ວຍອຳນາດຄວາມເພີດເພີນເປັນປັດໄຈ

ພຣະຣາຊາບໍ່ຊົງພໍພຣະທະໄທແມ່ນພຽງເທົ່ານັ້ນ ຊົງໃຫ້ປັບຊັບຂອງເຂົາ ໑໐໐ ແດ່ ໑,໐໐໐ ແດ່ ໑໐໐,໐໐໐ ແດ່ ບຸກຄົນນັ້ນກໍສະເຫວີຍທຸກ ແລະໂທມະນັດ ຍ້ອນການໝົດເປືອງຊັບເປັນປັດໄຈ ຄວາມຢ້ານ ທຸກ ແລະໂທມະນັດຂອງເຂົານີ້ ເກີດມາຈາກອັນໃດ ຄວາມຢ້ານນີ້ ເກີດແກ່ເຂົາ ຍ້ອນຄວາມຮັກເປັນປັດໄຈ ຍ້ອນຄວາມເພີດເພີນເປັນປັດໄຈ ຍ້ອນຣາຄະເປັນປັດໄຈ ແລະຍ້ອນຄວາມກຳໜັດດ້ວຍອຳນາດຄວາມເພີດເພີນເປັນປັດໄຈ

ພຣະຣາຊາບໍ່ຊົງພໍພຣະທະໄທພຽງເທົ່ານັ້ນ ຊົງຮັບສັ່ງໃຫ້ຈັບເຂົາລົງອາຍາດ້ວຍປະການຕ່າງ ໆ ຄື ໃຫ້ຄ່ຽນດ້ວຍແສ້ແດ່ ໃຫ້ຄ່ຽນດ້ວຍຫວາຍແດ່ ໃຫ້ຕີດ້ວຍໄມ້ພອງແດ່ ຕັດມື ແດ່ ຕັດຕີນແດ່ ຕັດທັງມື ແລະຕີນແດ່ ຕັດໃບຫູແດ່ ຕັດດັງແດ່ ຕັດທັງໃບຫູແລະ ດັງແດ່ ວາງກ້ອນເຫຼັກແດງເທິງຫົວແດ່ ຖະລົກໜັງຫົວແລ້ວຂັດໃຫ້ຂາວເໝືອນສັງແດ່ ເອົາໄຟຍັດປາກຈົນເລືອດໄຫຼເໝືອນປາກຣາຫູແດ່ ເອົາຜ້າພັນຕົວທົດນ້ຳມັນແລ້ວຈູດໄຟເຜົາແດ່ ພັນມືແລ້ວຈູດໄຟຕາງທວນໄຟແດ່ ຖະລົກໜັງຕັ້ງແຕ່ຄໍເຖິງຂໍ້ຕີນໃຫ້ລຸກຍ່າງຢຽບໜັງຈົນລົ້ມລົງແດ່ ຖະລົກໜັງຕັ້ງແຕ່ຄໍເຖິງບັ້ນແອວເຮັດໃຫ້ແນມເບິ່ງເໝືອນນຸ່ງຜ້າຄາກອງແດ່ ສວມປອກເຫຼັກທີ່ແຂນສອກແລະເຂົ່າ

ແລ້ວສຸບຫຼາວທັງຫ້າທິດເອົາໄຟເຜົາແດ່ ໃຊ້ເບັດກ່ຽວໜັງຊີ້ນເອັນອອກມາແດ່ ປາດຊີ້ນອອກເປັນຕ່ອນ ໆ ເໝືອນຫຼຽນກະສາບແດ່ ປາດໜັງຊີ້ນເອັນອອກເຫຼືອໄວ້ແຕ່ກະດູກແດ່ ໃຊ້ຫຼາວແທງຮູຫູໃຫ້ຊອດເຖິງກັນແດ່ ສຸບໃຫ້ຕິດດິນແລ້ວຈັບເຂົາໝຸນໄດ້ຮອບແດ່ ທຸບກະດູກໃຫ້ແຫຼກແລ້ວຖະລົກໜັງອອກເຫຼືອ ໄວ້ແຕ່ກອງຊີ້ນເໝືອນຕັ່ງໃບໄມ້ແດ່ ຫົດຕົວດ້ວຍນ້ຳມັນທີ່ກຳລັງເດືອດພ່ານແດ່ ໃຫ້ໝາກັດກິນຈົນເຫຼືອແຕ່ກະດູກແດ່ ໃຫ້ນອນເທິງຫຼາວທັງເປັນແດ່ ເອົາດາບຕັດຫົວແດ່ບຸກຄົນນັ້ນຍ່ອມສະເຫວີຍທຸກແລະໂທມະນັດ ຍ້ອນການລົງໂທດເປັນປັດໄຈ ຄວາມຢ້ານ ທຸກແລະ ໂທມະນັດຂອງເຂົານີ້ ເກີດມາຈາກອັນໃດ ຄວາມຢ້ານນີ້ ເກີດແກ່ເຂົາ ຍ້ອນຄວາມຮັກເປັນປັດໄຈ ຍ້ອນຄວາມເພີດເພີນເປັນປັດໄຈ ຍ້ອນຣາຄະເປັນປັດໄຈ ແລະຍ້ອນຄວາມກຳໜັດດ້ວຍອຳນາດຄວາມເພີດເພີນເປັນປັດໄຈ ຫຼັງຈາກຕາຍແລ້ວ ບຸກຄົນນັ້ນຍ່ອມເຂົ້າເຖິງອະບາຍທຸກຄະຕິ ວິນິບາດ ນະຣົກ ຍ້ອນກຳຂອງຕົນ ພວກນາຍນິຣະຍະບານ ກໍລົງໂທດ ມີການຈອງຈຳ ໕ ຢ່າງ ຄື

໑. ເອົາຫຼາວເຫຼັກຮ້ອນຕຶງມືຂວາ
໒. ເອົາຫຼາວເຫຼັກຮ້ອນຕຶງມືຊ້າຍ
໓. ເອົາຫຼາວເຫຼັກຮ້ອນຕຶງຕີນຂວາ
໔. ເອົາຫຼາວເຫຼັກຮ້ອນຕຶງຕີນຊ້າຍ
໕. ເອົາຫຼາວເຫຼັກຮ້ອນຕຶງກາງເອິກ

ເຂົາສະເຫວີຍທຸກຂະເວທະນາຢ່າງເຜັດຮ້ອນໃນນະຣົກນັ້ນ ແຕ່ຍັງບໍ່ຕາຍຕາບເທົ່າທີ່ບາບກຳນັ້ນຍັງບໍ່ໝົດສິ້ນໄປ ຄວາມຢ້ານ ທຸກແລະໂທມະນັດຂອງເຂົານີ້ ເກີດມາຈາກອັນໃດ ຄວາມຢ້ານນີ້ ເກີດແກ່ເຂົາ ຍ້ອນຄວາມຮັກເປັນປັດໄຈ ຍ້ອນຄວາມເພີດເພີນເປັນປັດໄຈ ຍ້ອນຣາຄະເປັນປັດໄຈ ແລະຍ້ອນຄວາມກຳໜັດດ້ວຍອຳນາດຄວາມເພີດເພີນເປັນປັດໄຈ

ພວກນາຍນິຣະຍະບານໃຫ້ເຂົານອນລົງແລ້ວຖາກດ້ວຍຫອກ ຯລຯ ພວກນາຍນິຣະຍະບານຈັບເຂົາເອົາຕີນຂຶ້ນ ເອົາຫົວລົງ ເອົາມີດປາດ ພວກນາຍນິຣະຍະບານຈັບເຂົາຫຽມລົດແລ່ນກັບໄປກັບມາບົນພື້ນອັນຮ້ອນລຸກເປັນແປວ ໂຊດຊ່ວງ ພວກນາຍນິຣະຍະບານ ບັງຄັບເຂົາຂຶ້ນລົງພູເຂົາຖ່ານເພີງລູກໃຫຍ່ທີ່ໄຟລຸກໂຊນໂຊດຊ່ວງແດ່ ພວກນາຍນິຣະຍະບານຈັບເຂົາເອົາຕີນຂຶ້ນເອົາຫົວຖິ້ມລົງໃນໂລຫະກຸມພີອັນຮ້ອນແດງ ລຸກເປັນແສງໄຟ ໂຊດຊ່ວງ ເຂົາຖືກຕົ້ມເດືອດຈົນຕົວພອງໃນໂລຫະກຸມພີນັ້ນ ບາງເວລາລອຍຂຶ້ນ ບາງເທື່ອຈົມລົງ ບາງເທື່ອລອຍຂວາງ ເຂົາສະເຫວີຍທຸກຂະເວທະນາກ້າຢ່າງໜັກເຜັດຮ້ອນໃນໂລຫະກຸມພີອັນຮ້ອນແດງນັ້ນ ແຕ່ຍັງບໍ່ຕາຍຕາບເທົ່າທີ່ບາບກຳນັ້ນຍັງບໍ່ໝົດສິ້ນໄປ ຄວາມຢ້ານ ທຸກແລະໂທມະນັດຂອງເຂົານີ້ ເກີດມາຈາກອັນໃດ ຄວາມຢ້ານນີ້ ເກີດແກ່ເຂົາ ຍ້ອນຄວາມຮັກເປັນປັດໄຈ ຍ້ອນຄວາມເພີດເພີນເປັນປັດໄຈ ຍ້ອນຣາຄະເປັນປັດໄຈ ແລະຍ້ອນຄວາມກຳໜັດດ້ວຍອຳນາດຄວາມເພີດເພີນ ເປັນປັດໄຈ

# ວ່າດ້ວຍນະຮົກ

ພວກນາຍນິຣະຍະບານຈຶ່ງຖິ້ມເຂົາລົງໃນມະຫານະຮົກ ກໍມະຫານະຮົກນັ້ນ ມີ ໔ ແຈ ໔ ປະຕູ ແບ່ງອອກເປັນສ່ວນ ມີກຳແພງເຫຼັກລ້ອມຮອບອ້ອມ ຄອບດ້ວຍຝາເຫຼັກ ມະຫານະຮົກນັ້ນ ມີພື້ນເປັນເຫຼັກ ລຸກໂຊນໂຊດຊ່ວງ ແຜ່ໄປໄກດ້ານລະ ໑໐໐ ໂຍດ ຕັ້ງຢູ່ທຸກເມື່ອມະຫານະຮົກ ອັນໜ້າສະຍົດສະຫຍອງ ແຜດເຜົາສັດໃຫ້ມີທຸກຮ້າຍແຮງ ມີແປວໄຟ ເຂົ້າໃກ້ໄດ້ຍາກ ໜ້າຂົນລຸກ ໜ້າພັ່ນພຶງ ເປັນຕາຢ້ານ ໜ້າເປັນທຸກ ມີກອງໄຟລຸກຂຶ້ນຈາກຝາດ້ານຕາເວັນອອກ ແຜດເຜົາສັດຜູ້ມີບາບກຳ ໄປຮອດຝາດ້ານຕາເວັນຕົກ ມີກອງໄຟລຸກຂຶ້ນຈາກຝາດ້ານຕາເວັນຕົກ ແຜດເຜົາສັດຜູ້ມີບາບກຳ ໄປຮອດຝາດ້ານຕາເວັນອອກ ມີກອງໄຟລຸກຂຶ້ນຈາກຝາດ້ານໃຕ້ ແຜດເຜົາສັດຜູ້ມີບາບກຳ ໄປຮອດຝາດ້ານເໜືອ ມີກອງໄຟລຸກຂຶ້ນຈາກຝາດ້ານເໜືອ ແຜດເຜົາສັດຜູ້ມີບາບກຳ ໄປຮອດຝາດ້ານໃຕ້ ກອງໄຟທີ່ໜ້າສະພຶງຢ້ານ ພຸດຂຶ້ນມາຈາກເບື້ອງລຸ່ມ ແຜດເຜົາສັດຜູ້ມີບາບກຳ (ລຸກຖ້ວມ) ຕິດຫຼັງຄາ ກອງໄຟທີ່ໜ້າສະພຶງຢ້ານ ລຸກຂຶ້ນມາຈາກຫຼັງຄາແຜດເຜົາສັດຜູ້ມີບາບກຳ (ລາມລົງ) ກະທົບເຖິງພື້ນອະເວຈີມະຫານະຮົກ ທັງຂ້າງລຸ່ມ ຂ້າງເທິງ ດ້ານຂ້າງ ກໍເໝືອນກັບແຜ່ນເຫຼັກທີ່ຖືກໄຟເຜົາລົນ ຮ້ອນຮົນໂຊດຊ່ວງຢູ່ສະເໝີ ສັດທັງຫຼາຍທີ່ຫຍາບຊ້າຫຼາຍ ທຳກຳຮ້າຍແຮງຫຼາຍສະເໝີ ເປັນຜູ້ມີບາບກຳໂດຍສ່ວນດຽວ ມອດໄໝ້ຢູ່ໃນອະເວຈີມະຫານະຮົກນັ້ນ ແຕ່ກໍຍັງບໍ່ຕາຍຮ່າງກາຍຂອງສັດທີ່ຢູ່ໃນນະຮົກເຫຼົ່ານັ້ນ ເໝືອນກັບໄຟທີ່ໄໝ້ຢູ່ ຂໍທ່ານຈົ່ງເບິ່ງຄວາມໜັ້ນຄົງຂອງກຳເທີ້ນ ບໍ່ມີຂີ້ເຖົ່າແລະຂີ້ຄວັນໄຟເລີຍ ສັດນະຮົກທັງຫຼາຍແລ່ນໄປທາງຕາເວັນອອກ ຈາກຕາເວັນອອກນັ້ນ ກໍແລ່ນໄປທາງຕາເວັນຕົກ ແລ່ນໄປທາງເໜືອ ຈາກທາງເໜືອນັ້ນ ກໍແລ່ນໄປທາງດ້ານໃຕ້ແລ່ນໄປສູ່ທິດໃດ ໆ ປະຕູນັ້ນ ໆ ກໍປິດສາ ສັດເຫຼົ່ານັ້ນ ມີຄວາມຫວັງຈະອອກໄປ ຈຶ່ງທ່ຽວສະແຫວງຫາທາງອອກຢູ່ສະເໝີ ສັດເຫຼົ່ານັ້ນບໍ່ສາມາດຈະອອກໄປຈາກມະຫານະຮົກນັ້ນ ຍ້ອນກຳເປັນປັດໄຈ ຍ້ອນສັດເຫຼົ່ານັ້ນເຮັດກຳຊົ່ວຮ້າຍໄວ້ຫຼາຍ ຍັງໃຫ້ຜົນບໍ່ໝົດສິ້ນ

ຄວາມຢ້ານ ທຸກແລະໂທມະນັດຂອງເຂົານີ້ ເກີດມາຈາກອັນໃດ ຄວາມຢ້ານນີ້ ເກີດແກ່ເຂົາ ຍ້ອນຄວາມຮັກເປັນປັດໄຈ ຍ້ອນຄວາມເພີດເພີນເປັນປັດໄຈ ຍ້ອນຣາຄະເປັນປັດໄຈ ແລະຍ້ອນຄວາມກຳໜັດດ້ວຍອຳນາດຄວາມເພີດເພີນເປັນປັດໄຈ

ທຸກຂອງສັດນະຮົກກໍດີ ທຸກຂອງສັດທີ່ເກີດໃນກຳເນີດເດຍຣັດສານກໍດີ ທຸກຂອງສັດ ທີ່ເກີດໃນເຜດວິໄສກໍດີ ທຸກຂອງມະນຸດກໍດີ ເກີດມາຈາກອັນໃດ ຄື ເກີດຂຶ້ນມາຈາກໃສ ບັງເກີດມາຈາກໃສ ບັງເກີດຂຶ້ນມາຈາກໃສ ຜາກົດມາຈາກໃສ ຄວາມຢ້ານນີ້ ຍ່ອມມີ ມີຂຶ້ນ ເກີດ ເກີດຂຶ້ນ ບັງເກີດ ບັງເກີດຂຶ້ນ ຜາກົດແກ່ເຂົາ ຍ້ອນຄວາມຮັກເປັນປັດໄຈ ຍ້ອນຄວາມເພີດເພີນເປັນປັດໄຈ ຍ້ອນຣາຄະເປັນປັດໄຈ ແລະຍ້ອນຄວາມກຳໜັດດ້ວຍອຳນາດຄວາມເພີດເພີນເປັນປັດໄຈ ລວມຄວາມວ່າ ທຸກນີ້ ຍ່ອມເປັນໄປຕາມ ຄວາມຮັກ

ຄຳວ່າ ເຮົາເມື່ອເພ່ງເຫັນໂທດອັນເກີດຈາກຄວາມຮັກ ອະທິບາຍວ່າ

ຄຳວ່າ ຄວາມຮັກ ໄດ້ແກ່ ຄວາມຮັກ ໒ ຢ່າງ ຄື (໑) ຄວາມຮັກດ້ວຍອຳນາດຕັນຫາ (໒) ຄວາມຮັກດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມຮັກດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າ ຄວາມຮັກດ້ວຍອຳນາດທິດຖິ

ຄຳວ່າ ເຮົາເມື່ອເພ່ງເຫັນໂທດອັນເກີດຈາກຄວາມຮັກ ອະທິບາຍວ່າ ເຮົາເມື່ອເພ່ງເຫັນ ຄື ແນມເຫັນ ແນມເບິ່ງ ເພ່ງພິນິດ ພິຈາລະນາເຫັນໂທດອັນເກີດຈາກຄວາມຮັກ ຄື ຄວາມຮັກດ້ວຍອຳນາດຕັນຫາ ແລະຄວາມຮັກດ້ວຍອຳນາດທິດຖິ ລວມຄວາມວ່າ ເຮົາເມື່ອເພ່ງເຫັນໂທດອັນເກີດຈາກຄວາມຮັກ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ຄວາມຮັກ ຍ່ອມມີແກ່ຜູ້ມີຄວາມກ່ຽວຂ້ອງ
ທຸກນີ້ ຍ່ອມເປັນໄປຕາມຄວາມຮັກ
ເຮົາເມື່ອເພ່ງເຫັນໂທດອັນເກີດຈາກຄວາມຮັກ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໒໓] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ບຸກຄົນເມື່ອອະນຸເຄາະມິດ ສະຫາຍຜູ້ໃຈດີ
ມີໃຈຜູກພັນ ຍ່ອມເຮັດປະໂຫຍດໃຫ້ເສື່ອມໄປໄດ້
ບຸກຄົນເມື່ອເພ່ງເຫັນໄພນັ້ນໃນຄວາມເຊີຍຊິດ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໓)

ຄຳວ່າ ບຸກຄົນເມື່ອອະນຸເຄາະມິດ ສະຫາຍຜູ້ໃຈດີ ມີໃຈຜູກພັນ ຍ່ອມເຮັດປະໂຫຍດໃຫ້ເສື່ອມໄປໄດ້ ອະທິບາຍວ່າ

ຄຳວ່າ ມິດ ໄດ້ແກ່ ມິດ ໒ ຈຳພວກ ຄື

໑. ອາຄາຣິກະມິດ
໒. ອະນາຄາຣິກະມິດ

ອາຄາຣິກະມິດ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ໃຫ້ສິ່ງທີ່ໃຫ້ໄດ້ຍາກ ສະລະສິ່ງທີ່ສະລະໄດ້ຍາກ ເຮັດສິ່ງທີ່ເຮັດໄດ້ຍາກ ທົນສິ່ງທີ່ທົນໄດ້ຍາກ ບອກຄວາມລັບແກ່ເພື່ອນ ປົກປິດຄວາມລັບຂອງເພື່ອນ ບໍ່ປະຖິ້ມ

ໃນເວລາມີອັນຕະລາຍ ແມ່ນຊີວິດກໍສະລະເພື່ອປະໂຫຍດແກ່ເພື່ອນໄດ້ ເມື່ອເພື່ອນສິ້ນເນື້ອປະດາຕົວກໍບໍ່ດູໝິ່ນ ນີ້ຊື່ວ່າອາຄາຣິກມິດ

ອະນາຄາຣິກະມິດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນທີ່ຮັກ ພໍໃຈ ເປັນທີ່ເຄົາລົບ ຄວນຍ້ອງຍໍ ເວົ້າເປັນ ທົນຟັງຄຳເວົ້າໄດ້ ກ່າວຄຳເວົ້າໄດ້ເລິກເຊິ່ງ ແລະບໍ່ຊັກນຳໄປໃນເລື່ອງບໍ່ສົມຄວນ ຊັກຊວນ (ໃຫ້ບຳເພັນ) ໃນທາງອະທິສີນ ຊັກຊວນໃຫ້ໝັ່ນຈະເລີນສະຕິປັດຖານ ໔ ຊັກຊວນໃຫ້ໝັ່ນຈະເລີນສຳມັບປະທານ ໔ ຯລຯ ອິດທິບາດ ໔ ຯລຯ ອິນຊີ ໕ ຯລຯ ພະລະ ໕ ຯລຯ ໂພດຊົງ ໗ ຯລຯ ອະຣິຍະມັກມີອົງ ໘ ນີ້ຊື່ວ່າ ອະນາະາຣິກະມິດ

ຄຳວ່າ ສະຫາຍຜູ້ໃຈດີ ອະທິບາຍວ່າ ການມາສະບາຍ ການໄປສະບາຍ ການໄປການມາສະບາຍ ການຢືນສະບາຍ ການນັ່ງສະບາຍ ການນອນສະບາຍ ການທັກທາຍສະບາຍ ການສົນທະນາສະບາຍ ການເຈຣະຈາສະບາຍ ການສົນທະນາປາໄສສະບາຍ ກັບຊົນເຫຼົ່າໃດ ຊົນເຫຼົ່ານັ້ນ ຮຽກວ່າ ສະຫາຍຜູ້ໃຈດີ

ຄຳວ່າ ບຸກຄົນເມື່ອອະນຸເຄາະມິດ ສະຫາຍຜູ້ໃຈດີ ຯລຯ ຍ່ອມເຮັດປະໂຫຍດໃຫ້ເສື່ອມໄປໄດ້ ອະທິບາຍວ່າ ບຸກຄົນເມື່ອອະນຸເຄາະ ຄື ອຸດໜຸນ ເກື້ອກູນມິດ ຄົນໃຈດີ ເພື່ອນທີ່ເຫັນກັນມາ ເພື່ອນທີ່ຄົບກັນມາ ແລະສະຫາຍ ຍ່ອມເຮັດໃຫ້ປະໂຫຍດຕົນເສື່ອມໄປແດ່ ຍ່ອມເຮັດໃຫ້ປະໂຫຍດຜູ້ອື່ນເສື່ອມໄປແດ່ ຍ່ອມເຮັດໃຫ້ປະໂຫຍດທັງສອງຝ່າຍເສື່ອມໄປແດ່ ຍ່ອມເຮັດໃຫ້ປະໂຫຍດໃນປັດຈຸບັນເສື່ອມໄປແດ່ ຍ່ອມເຮັດໃຫ້ປະໂຫຍດໃນພົບໜ້າເສື່ອມໄປແດ່ ຍ່ອມເຮັດໃຫ້ປະໂຫຍດຢ່າງຍິ່ງເສື່ອມໄປແດ່ ຄື ໃຫ້ເສຍໄປ ໃຫ້ສິ້ນໄປ ໃຫ້ເສື່ອມເສຍ ສູນຫາຍ ສູນຫາຍໄປ ລວມຄວາມວ່າ ບຸກຄົນເມື່ອອະນຸເຄາະມິດ ສະຫາຍຜູ້ໃຈດີ ຯລຯ ຍ່ອມ ເຮັດປະໂຫຍດໃຫ້ເສື່ອມໄປໄດ້

ຄຳວ່າ ມີໃຈຜູກພັນ ອະທິບາຍວ່າ ບຸກຄົນມີໃຈຜູກພັນດ້ວຍເຫດ ໒ ຢ່າງ ຄື

໑. ເມື່ອວາງຕົນຕ່ຳວາງຜູ້ອື່ນສູງ ຊື່ວ່າມີໃຈຜູກພັນ
໒. ເມື່ອວາງຕົນສູງວາງຜູ້ອື່ນຕ່ຳ ຊື່ວ່າມີໃຈຜູກພັນ

ບຸກຄົນເມື່ອວາງຕົນຕ່ຳ ວາງຜູ້ອື່ນສູງ ຊື່ວ່າມີໃຈຜູກພັນ ເປັນແນວໃດ?

ຄື ພິກຂຸກ່າວວ່າ ພວກທ່ານມີອຸປະກາຣະຫຼາຍແກ່ອາດຕະມາພາບ ອາດຕະມາພາບອາໄສ ພວກທ່ານຈຶ່ງໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານຄົນເຫຼົ່າອື່ນອາໄສພວກທ່ານ ເຫັນກັບພວກທ່ານ ຈຶ່ງເຂົ້າໃຈທີ່ຈະໃຫ້ ຫຼືຈະເຮັດແກ່ອາດຕະມາພາບ ຊື່ແລະສະກຸນເກົ່າຂອງມານດາບິດາຂອງອາດຕະມາພາບສູນຫາຍໄປຫມົດແລ້ວ ພວກ

ທ່ານເຮັດໃຫ້ອາດຕະມາພາບ ເປັນທີ່ຮູ້ຈັກວ່າ ອາດຕະມາພາບ ເປັນພຣະປະຈໍາຕະກູນຂອງອຸປາສິການັ້ນ ເປັນພຣະປະຈໍາຕະກູນຂອງອຸປາສິການັ້ນ ດັ່ງນີ້ ເມື່ອວາງຕົນຕໍ່າ ວາງຜູ້ອື່ນສູງ ຊື່ວ່າມີໃຈຜູກພັນ ເປັນແນວນີ້

ບຸກຄົນເມື່ອວາງຕົນສູງ ວາງຜູ້ອື່ນຕໍ່າ ຊື່ວ່າມີໃຈຜູກພັນ ເປັນແນວໃດ?

ຄື ພິກຂຸກ່າວວ່າ ອາດຕະມາພາບມີອຸປະການະຫຼາຍແກ່ພວກທ່ານ ພວກທ່ານອາໄສອາດຕະມາພາບແລ້ວ ຈຶ່ງໄດ້ເຖິງພຣະພຸດທະເຈົ້າເປັນບ່ອນເພິ່ງ ເຖິງພຣະທໍາເປັນບ່ອນເພິ່ງ ເຖິງພຣະສົງເປັນບ່ອນເພິ່ງ ເວັ້ນຂາດຈາກປານາຕິບາດ ອະທິນນາທານ ກາເມສຸມິດສາຈານະ ມຸສາວາດ ເວັ້ນຂາດ ຈາກສຸຣາເມໄຣອັນເປັນຂອງມຶນເມົາອັນເປັນບ່ອນຕັ້ງແຫ່ງຄວາມຜະໝາດ ອາດຕະມາພາບບອກອຸດເທດ (ບາລີ) ແດ່ ປະຣິປຸດສາ (ອັດຖະກະຖາ) ແດ່ ສິນແດ່ ອຸໂປສົດແດ່ ແກ່ພວກທ່ານ

ອາດຕະມາພາບອະທິຖານນະວະກໍາ (ຕັ້ງໃຈທໍາການກໍ່ສ້າງ) ເມື່ອເປັນເຊັ່ນນັ້ນ ພວກທ່ານຍັງປະຖິ້ມອາດຕະມາພາບໄປ ສັກການະ ເຄົາລົບ ນັບຖື ບູຊາຜູ້ອື່ນ ເມື່ອວາງຕົນສູງ ວາງຜູ້ອື່ນຕໍ່າ

ຊື່ວ່າມີໃຈຜູກພັນ ເປັນແນວນີ້ ລວມຄວາມວ່າ ບຸກຄົນເມື່ອອະນຸເຄາະມິດ ສະຫາຍຜູ້ໃຈດີ ມີໃຈຜູກພັນ ຍ່ອມເຮັດປະໂຫຍດໃຫ້ເສື່ອມໄປໄດ້

## ວ່າດ້ວຍໄພ

ຄໍາວ່າ ໄພ ໃນຄໍາວ່າ ເມື່ອເພ່ງເຫັນໄພນັ້ນໃນຄວາມເຊີຍຊິດ ໄດ້ແກ່ ຊາດໄພ ຊະຣາໄພ ພະຍາທິໄພ ມໍຣະນະໄພ ຣາດຊະໄພ ໂຈຣະໄພ ອັກຄີໄພ ອຸທະກະໄພ ອັດຕານຸວາທະໄພ (ໄພເກີດຈາກການຕິຕຽນຕົນ) ປະຣະນຸວາທະໄພ (ໄພເກີດຈາກການຕິຕຽນຂອງຜູ້ອື່ນ) ທັນດະໄພ (ໄພຈາກ ອາດຍາ) ທຸກຄະຕິໄພ (ໄພໃນທຸກຄະຕິ) ອູມິໄພ (ໄພຈາກຄື້ນ) ກຸມພີລະໄພ (ໄພຈາກແຂ້) ອາວັດຕະໄພ (ໄພຈາກນໍ້າວົນ) ສຸງສຸມາຣະໄພ (ໄພຈາກປາຮ້າຍ) ອາຊີວິກະໄພ (ໄພຈາກການຫາລ້ຽງຊີບ) ອະສິໂລກະໄພ (ໄພຄືຄວາມເສື່ອມເສຍຊື່ສຽງ) ປະຣິສະສາຣັດຊະໄພ (ໄພຈາກຄວາມເກງກົວໃນຊຸມຊົນ) ມະທະນະໄພ (ໄພຈາກຄວາມມົວເມົາ) ເຫດທີ່ເປັນຕາຢ້ານຄວາມຫວາດສຽວ ຂົນພອງສະຍອງຫົວ ໃຈຫວາດສຽວ ຄວາມສະດຸ້ງ

ຄໍາວ່າ ຄວາມເຊີຍຊິດ ໄດ້ແກ່ ຄວາມເຊີຍຊິດ ໒ ຢ່າງ ຄື (໑) ຄວາມເຊີຍຊິດດ້ວຍອໍານາດຕັນຫາ (໒) ຄວາມເຊີຍຊິດດ້ວຍອໍານາດທິດຖິ ຯລຯ ນີ້ຊື່ວ່າຄວາມເຊີຍຊິດດ້ວຍອໍານາດຕັນຫາ ຯລຯ ນີ້ຊື່ວ່າຄວາມເຊີຍຊິດດ້ວຍອໍານາດທິດຖິ

ຄໍາວ່າ ເມື່ອເພ່ງເຫັນໄພນັ້ນໃນຄວາມເຊີຍຊິດ ອະທິບາຍວ່າ ເມື່ອເພ່ງເຫັນ ຄື ແນມເຫັນ ແນມເບິ່ງ ເພ່ງພິນິດ ພິຈາລະນາໄພໃນຄວາມເຊີຍຊິດນີ້ ລວມຄວາມວ່າ ເມື່ອເພ່ງເຫັນໄພ

ນັ້ນໃນຄວາມເຊີຍຊິດ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສໍາພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ບຸກຄົນເມື່ອອະນຸເຄາະມິດ ສະຫາຍຜູ້ໃຈດີ
ມີໃຈຜູກພັນ ຍ່ອມເຮັດປະໂຫຍດໃຫ້ເສື່ອມໄປໄດ້
ບຸກຄົນເມື່ອເພ່ງເຫັນໄພນັ້ນໃນຄວາມເຊີຍຊິດ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໘໔] (ພຣະປັດເຈກພຸດທະເຈົ້າກ່າວວ່າ)

ກໍໄຜ່ກວ້າງໃຫຍ່ ເກາະກ່ຽວກັນໄວ້ ສັນໃດ
ຄວາມຫ່ວງໃຍໃນບຸດແລະທາຣະ ກໍກວ້າງໃຫຍ່ເກາະກ່ຽວໄວ້ ສັນນັ້ນ
ບຸກຄົນເມື່ອບໍ່ກ່ຽວຂ້ອງເໝືອນກໍໄຜ່
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໔)

## ວ່າດ້ວຍຕັນຫາ

ຄໍາວ່າ ກໍໄຜ່ກວ້າງໃຫຍ່ ເກາະກ່ຽວກັນໄວ້ ສັນໃດ ອະທິບາຍວ່າ ພຸ່ມຕົ້ນໄຜ່ ຮຽກວ່າ ກໍໄຜ່ ໃນພຸ່ມຕົ້ນໄຜ່ ຍ່ອມມີໜາມຈາກກໍເກົ່າ ຫຍຸ້ງ ຄື ຮົກ ກ່ຽວ ຂ້ອງ ເກາະຕິດ ກ່ຽວພັນ ພົວພັນກັນ ສັນໃດ ຕັນຫາ ຮຽກວ່າ ວິສັດຕິກາ ສັນນັ້ນຄືກັນ ຄື ຄວາມກໍາໜັດ ຄວາມກໍາໜັດແຮງກ້າ ຄວາມໄປຕາມອາລົມ ຄວາມຍິນດີ ຄວາມເພີດເພີນ ຄວາມກໍາໜັດດ້ວຍອໍານາດຄວາມເພີດເພີນ ຄວາມກໍາໜັດແຮງກ້າແຫ່ງຈິດ ຄວາມຢາກ ຄວາມສະຍົບ ຄວາມມົກມຸ່ນ ຄວາມຫື່ນ ຄວາມຫື່ນກະຫາຍ ຄວາມຂ້ອງຢູ່ ຄວາມຈົມຢູ່ ທໍາມະຊາດທີ່ເຮັດໃຫ້ພຸກພ່ານ ທໍາມະຊາດທີ່ຫຼອກລວງ ທໍາມະຊາດທີ່ຍັງສັດໃຫ້ເກີດ ທໍາມະຊາດທີ່ຍັງສັດໃຫ້ເກີດພ້ອມ ທໍາມະຊາດທີ່ຮ້ອຍຮັດ ທໍາມະຊາດທີ່ມີຕາໜ່າງ ທໍາມະຊາດທີ່ກໍາຊາບໃຈ ທໍາມະຊາດທີ່ຊ່ານໄປ ທໍາມະຊາດເໝືອນເສັ້ນດ້າຍ ທໍາມະຊາດທີ່ແຜ່ໄປ ທໍາມະຊາດທີ່ປະມວນມາ ທໍາມະຊາດທີ່ເປັນເພື່ອນ ຄວາມຄະນຶງຫາ ຕັນຫາທີ່ນໍາພາໄປສູ່ພົບ ຕັນຫາເໝືອນປ່າ ຕັນຫາເໝືອນປ່າທຶບ ຄວາມເຊີຍຊິດ ຄວາມເຍື່ອໃຍ ຄວາມຫ່ວງໃຍ ຄວາມຜູກພັນ ຄວາມຫວັງ ກິຣິຍາທີ່ຫວັງ ພາວະທີ່ຫວັງ ຄວາມຫວັງໃນຮູບ ຄວາມຫວັງໃນສຽງ ຄວາມຫວັງໃນກິ່ນ ຄວາມຫວັງໃນຣົດ ຄວາມຫວັງໃນໂຜດຖັບພະ ຄວາມຫວັງໃນລາບ ຄວາມຫວັງໃນຊັບ ຄວາມຫວັງໃນບຸດ ຄວາມຫວັງໃນຊີວິດ ທໍາມະຊາດທີ່ກະຊິບ ທໍາມະຊາດທີ່ກະຊິບເລື້ອຍ ໆ ທໍາມະຊາດທີ່ກະຊິບຍິ່ງ ຄວາມກະຊິບ ກິຣິຍາທີ່ກະຊິບ ພາວະທີ່ກະຊິບ ຄວາມລະໂມບ ກິຣິຍາທີ່ລະໂມບ ພາວະທີ່ລະໂມບ ທໍາມະຊາດທີ່ເຮັດໃຫ້ຫວັ່ນໄຫວ ພາວະທີ່ຕ້ອງການແຕ່ອາລົມດີ ໆ ຄວາມກໍາໜັດໃນຖານະອັນບໍ່ຄວນ ຄວາມໂລບເກີນພໍດີ

ຄວາມຕິດໃຈ ກິຣິຍາທີ່ຕິດໃຈ ຄວາມປາຖະໜາ ຄວາມໃຝ່ຫາ ຄວາມໝາຍປອງ ກາມຕັນຫາ ພະວະຕັນຫາ ວິພະວະຕັນຫາ ຕັນຫາໃນຣູບພົບ ຕັນຫາໃນອະຣູບພົບ ຕັນຫາໃນນິໂຣດ ຣູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ ໂອຄະ ໂຍຄະ ຄັນຖະ ອຸປາທານ ອາວອນ ນິວອນ ເຄື່ອງປິດບັງ ເຄື່ອງຜູກ ອຸປະກິເລດ ອະນຸໄສ ປະຣິຍຸດຖານ ຕັນຫາເໝືອນເຄືອເຂົາ ຄວາມປາຖະໜາວັດຖຸຕ່າງ ໆ ຮາກເຫງົ້າແຫ່ງທຸກ ເຫດແຫ່ງທຸກ ແດນເກີດແຫ່ງທຸກ ບ້ວງແຫ່ງມານ ເບັດແຫ່ງມານ ວິໄສແຫ່ງມານ ບ່ອນອາໄສແຫ່ງມານ ໂຄຈອນແຫ່ງມານ ເຄື່ອງຜູກແຫ່ງມານ ຕັນຫາເໝືອນແມ່ນ້ຳ ຕັນຫາເໝືອນຕາໜ່າງ ຕັນຫາເໝືອນຕ່ອງໂຊ່ ຕັນຫາເໝືອນມະຫາສະມຸດ ອະພິດຊາ ອະກຸສົນມູນ ຄື ໂລພະ

ຄຳວ່າ ວິສັດຕິກາ ອະທິບາຍວ່າ ຕັນຫາຊື່ວ່າວິສັດຕິກາ ຍ້ອນມີຄວາມໝາຍແນວໃດ?

ຕັນຫາຊື່ວ່າວິສັດຕິກາ ຍ້ອນແຜ່ຊ່ານໄປ

ຊື່ວ່າວິສັດຕິກາ ຍ້ອນແຜ່ໄປ

ຊື່ວ່າວິສັດຕິກາ ຍ້ອນຂະຫຍາຍໄປ

ຊື່ວ່າວິສັດຕິກາ ຍ້ອນບໍ່ສະໝ່ຳສະເໝີ

ຊື່ວ່າວິສັດຕິກາ ຍ້ອນຄອບງຳ

ຊື່ວ່າວິສັດຕິກາ ຍ້ອນສະທ້ອນໄປ

ຊື່ວ່າວິສັດຕິກາ ຍ້ອນເປັນຕົວການໃຫ້ເວົ້າຜິດ

ຊື່ວ່າວິສັດຕິກາ ຍ້ອນມີຮາກເປັນພິດ

ຊື່ວ່າວິສັດຕິກາ ຍ້ອນມີຜົນເປັນພິດ

ຊື່ວ່າວິສັດຕິກາ ຍ້ອນເປັນຕົວການໃຫ້ບໍຣິໂພກສິ່ງມີພິດ

ອີກໄນໜຶ່ງ ຕັນຫານັ້ນ ແຜ່ໄປ ຊ່ານໄປ ຂະຫຍາຍໄປໃນຣູບ ສຽງ ກິ່ນ ຣົດ ໂຜດຖັບພະ ຕະກູນ ໝູ່ຄະນະ ອາວາດ ລາບ ຍົດ ສັນເສີນ ສຸກ ຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດບໍຣິຂານ ກາມທາດ ຣູບທາດ ອະຣູບທາດ ກາມະພົບ ຣູບພົບ ອະຣູບພົບ ສັນຍາພົບ ອະສັນຍາພົບ ເນວະສັນຍານາສັນຍາພົບ ເອກະໂວກາຣະພົບ ຈະຕຸໂວກາຣະພົບ ປັນຈະໂວກາຣະພົບ ອະດີດ ອະນາຄົດ ປັດຈຸບັນ ຣູບທີ່ເຫັນແລ້ວ ສຽງທີ່ໄດ້ຍິນແລ້ວ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ແລ້ວ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ດັ່ງນັ້ນ ຈຶ່ງຊື່ວ່າວິສັດຕິກາ ລວມຄວາມວ່າ ກໍໃຜ່ກວ້າງໃຫຍ່ເກາະກ່ຽວກັນໄວ້ ສັນໃດ

ຄຳວ່າ ບຸດ ໃນຄຳວ່າ ຄວາມຫ່ວງໃຍໃນບຸດ ແລະທາຣະກໍກວ້າງໃຫຍ່ ເກາະກ່ຽວໄວ້ສັນນັ້ນ ໄດ້ແກ່ ບຸດ ໔ ຈຳພວກ ຄື

໑. ບຸດເກີດຈາກຕົນ　　໒. ບຸດເກີດໃນເຂດ

໓. ບຸດທີ່ເຂົາໃຫ້　　໔. ບຸດທີ່ຢູ່ໃນສຳນັກ

ເນຍ ຮຽກວ່າ ທາຣະ

ຕັນຫາຮຽກວ່າ ຄວາມຫ່ວງໃຍ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ฯລฯ ອະພິດຊາ ອະກຸສົນມູນ ຄື ໂລພະ ລວມຄວາມວ່າ ຄວາມຫ່ວງໃຍໃນບຸດ ແລະທາຣະກໍກວ້າງໃຫຍ່ ເກາະກ່ຽວໄວ້ ສັນນັ້ນ

ຄຳວ່າ ບຸກຄົນເມື່ອບໍ່ກ່ຽວຂ້ອງ ເໝືອນກໍໄຜ່ ອະທິບາຍວ່າ ພຸ່ມຕົ້ນໄຜ່ຮຽກວ່າ ກໍໄຜ່ ເໝືອນໜໍ່ອ່ອນໃນກໍໄຜ່ ບໍ່ຂ້ອງ ບໍ່ເກາະຕິດ ບໍ່ຖືກຜູກມັດ ບໍ່ພົວພັນ ຜຸດອອກ ສະລັດອອກ ຜຸດພົ້ນຂຶ້ນໄດ້

ຄຳວ່າ ກ່ຽວຂ້ອງ ໄດ້ແກ່ ຄວາມກ່ຽວຂ້ອງ ໒ ຢ່າງ ຄື (໑) ຄວາມກ່ຽວຂ້ອງດ້ວຍອຳນາດຕັນຫາ (໒) ຄວາມກ່ຽວຂ້ອງດ້ວຍອຳນາດທິດຖິ ฯລฯ ນີ້ຊື່ວ່າຄວາມຂ້ອງດ້ວຍອຳນາດຕັນຫາ ฯລฯ ນີ້ຊື່ວ່າຄວາມກ່ຽວຂ້ອງດ້ວຍອຳນາດທິດຖິ

ພຣະປັດເຈກສຳພຸດທະເຈົ້ານັ້ນລະຄວາມກ່ຽວຂ້ອງດ້ວຍອຳນາດຕັນຫາ ສະລັດຖິ້ມຄວາມກ່ຽວຂ້ອງດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະຄວາມກ່ຽວຂ້ອງດ້ວຍອຳນາດຕັນຫາ ສະລັດຖິ້ມຄວາມກ່ຽວຂ້ອງດ້ວຍອຳນາດທິດຖິໄດ້ແລ້ວ ພຣະປັດເຈກສຳພຸດທະເຈົ້ານັ້ນ ຈຶ່ງບໍ່ກ່ຽວຂ້ອງໃນຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ຕະກູນ ฯລฯ ໝູ່ຄະນະ ฯລฯ ອາວາດ ฯລฯ ລາບ ฯລฯ ຍົດ ฯລฯ ສັນເສີນ ฯລฯ ສຸກ ฯລฯ ຈີວອນ ฯລฯ ບິນທະບາດ ฯລฯ ເສນາສະນະ ฯລฯ ຄິລານະປັດໄຈເພສັດບໍຣິຂານ ฯລฯ ກາມທາດ ฯລฯ ຮູບທາດ ฯລฯ ອະຮູບທາດ ฯລฯ ກາມະພົບ ฯລฯ ຮູບພົບ ฯລฯ ອະຮູບພົບ ฯລฯ ສັນຍາພົບ ฯລฯ ອະສັນຍາພົບ ฯລฯ ເນວະສັນຍານາສັນຍາພົບ ฯລฯ ເອກະໂວກາຣະພົບ ฯລฯ ຈະຕຸໂວກາຣະພົບ ฯລฯ ປັນຈະໂວກາຣະພົບ ฯລฯ ອະດີດ ອະນາຄົດ ປັດຈຸບັນ ฯລฯ ໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ຮັບຮູ້ແລ້ວ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ໄດ້ແກ່ ບໍ່ຢຶດ ບໍ່ຕິດ ບໍ່ພົວພັນ ບໍ່ສະຍົບ ຄື ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງ ມີໃຈເປັນອິດສະຫຼະ (ຈາກຄວາມກ່ຽວຂ້ອງ) ຢູ່ ລວມຄວາມວ່າ ບຸກຄົນເມື່ອບໍ່ກ່ຽວຂ້ອງ ເໝືອນກໍໄຜ່ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ກໍໄຜ່ກວ້າງໃຫຍ່ ເກາະກ່ຽວກັນໄວ້ ສັນໃດ
ຄວາມຫ່ວງໃຍໃນບຸດແລະທາຣະ ກໍກວ້າງໃຫຍ່ເກາະກ່ຽວໄວ້ ສັນນັ້ນ
ບຸກຄົນເມື່ອບໍ່ກ່ຽວຂ້ອງເໝືອນກໍໄຜ່
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໒໕] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ເນື້ອໃນປ່າ ບໍ່ໄດ້ຖືກຜູກມັດໄວ້
ຍ່ອມໄປຫາອາຫານໄດ້ຕາມຄວາມພໍໃຈ ສັນໃດ

ວິນຍູຊົນເມື່ອເພ່ງເຫັນທຳທີ່ໃຫ້ເຖິງຄວາມເສຣີ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ສັນນັ້ນ (໕)

ຄຳວ່າ ເນື້ອໃນຄຳວ່າ ເນື້ອໃນປ່າ ບໍ່ໄດ້ຖືກຜູກມັດໄວ້ ຍ່ອມໄປຫາອາຫານໄດ້ ຕາມຄວາມພໍໃຈ ສັນໃດ ໄດ້ແກ່ ເນື້ອ ໒ ຊະນິດ ຄື (໑) ເນື້ອຊາຍ (໒) ເນື້ອສະມັນ ເນື້ອຢູ່ໃນປ່າ ເມື່ອທ່ຽວໄປຕາມປ່ານ້ອຍປ່າໃຫຍ່ ຍ່ອມວາງໃຈຍ່າງ ຢືນ ໝອບ ນອນ ສັນໃດ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວ້ວ່າ ພິກຂຸທັງຫຼາຍ ປຽບເໝືອນເນື້ອປ່າ ເມື່ອທ່ຽວໄປຕາມປ່ານ້ອຍປ່າໃຫຍ່ ຍ່ອມວາງໃຈຍ່າງ ຢືນ ໝອບ ນອນ ຂໍ້ນັ້ນຍ້ອນເຫດອັນໃດ ຍ້ອນບໍ່ໄດ້ພົບກັບນາຍພານເນື້ອ ສັນໃດ ພິກຂຸກໍສັນນັ້ນ ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານ ທີ່ມີວິຕົກວິຈານ ປີຕິ ແລະສຸກອັນເກີດຈາກ ວິເວກຢູ່ ເຮົາຮຽກພິກຂຸນີ້ວ່າ ຜູ້ເຮັດໃຫ້ມານຕາບອດ ຄື ເປັນຜູ້ທີ່ມານໃຈບາບແນມບໍ່ເຫັນ ຍ້ອນທຳລາຍຈັກຂຸ (ປັນຍາຈັກຂຸ) ຂອງມານຢ່າງບໍ່ມີຮ່ອງຮອຍ

ອີກໄນໜຶ່ງ ຍ້ອນວິຕົກ ແລະວິຈານສະງົບໄປ ພິກຂຸບັນລຸທຸຕິຍະຊານ ມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກທີ່ເກີດຈາກສະມາທິຢູ່ ເຮົາຮຽກພິກຂຸນີ້ວ່າ ຜູ້ເຮັດໃຫ້ມານຕາບອດ ຄືເປັນຜູ້ທີ່ມານໃຈບາບແນມບໍ່ເຫັນ ກໍຍ້ອນທຳລາຍຈັກຂຸຂອງມານຢ່າງບໍ່ມີຮ່ອງຮອຍ

ອີກໄນໜຶ່ງ ຍ້ອນປີຕິໝົດສິ້ນໄປ ພິກຂຸມີແຕ່ອຸເປກຂາ ສະຕິ ແລະສຳປະຊັນຍະ ແລະສະເຫວີຍສຸກທາງກາຍຢູ່ ບັນລຸຕະຕິຍະຊານ ທີ່ພຣະອະຣິຍະເຈົ້າກ່າວວ່າ ເປັນຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ ເຮົາຮຽກພິກຂຸນີ້ວ່າ ຜູ້ເຮັດໃຫ້ມານຕາບອດ ຄື ເປັນຜູ້ທີ່ມານໃຈບາບແນມບໍ່ເຫັນ ຍ້ອນທຳລາຍຈັກຂຸຂອງມານຢ່າງບໍ່ມີຮ່ອງຮອຍ

ອີກໄນໜຶ່ງ ຍ້ອນລະສຸກແລະທຸກ ແລະດັບໂສມະນັດແລະໂທມະນັດກ່ອນ ໆ ໄດ້ ພິກຂຸບັນລຸຈະຕຸດຖະຊານ ທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ເຮົາຮຽກພິກຂຸນີ້ວ່າ ຜູ້ເຮັດໃຫ້ມານຕາບອດ ຄື ເປັນຜູ້ທີ່ມານໃຈບາບແນມບໍ່ເຫັນ ຍ້ອນທຳລາຍຈັກຂຸຂອງມານຢ່າງບໍ່ມີຮ່ອງຮອຍ

ອີກໄນໜຶ່ງ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ມະນະສິການນານັດຕະສັນຍາ ໂດຍປະການທັງປວງ ພິກຂຸບັນລຸອາກາສານັນຈາຍະຕະນະຊານຢູ່ ດ້ວຍມະນະສິການວ່າ ອາກາດບໍ່ມີບ່ອນສຸດ ເຮົາຮຽກພິກຂຸນີ້ວ່າ ຜູ້ເຮັດໃຫ້ມານຕາບອດ ຄື ເປັນຜູ້ທີ່ມານໃຈບາບແນມບໍ່ເຫັນ ຍ້ອນທຳລາຍຈັກຂຸຂອງມານຢ່າງບໍ່ມີຮ່ອງຮອຍ

ອີກໄນໜຶ່ງ ຍ້ອນລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸວິນຍານັນຈາຍະຕະນະຊານຢູ່ ດ້ວຍມະນະສິການວ່າ ວິນຍານບໍ່ມີບ່ອນສຸດ ຯລຯ

ອີກໄນໜຶ່ງ ຍ້ອນລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸອາກິນຈັນຍາຍະຕະນະຊານຢູ່ ດ້ວຍມະນະສິການວ່າ ອັນໃດໜ້ອຍໜຶ່ງ ຍ່ອມບໍ່ມີ ຯລຯ

ອີກໄນໜຶ່ງ ຍ້ອນລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ດ້ວຍມະນະສິການວ່າ ນີ້ສະງົບ ນີ້ປະນີດ ຯລຯ

ພິກຂຸທັງຫຼາຍ ຍ້ອນລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ພິກຂຸບັນລຸສັນຍາເວທະຍິຕະນິໂຣດຢູ່ ຯລຯ ຍ້ອນເຫັນດ້ວຍປັນຍາ ອາສະວະທັງຫຼາຍຂອງທ່ານຍ່ອມສິ້ນໄປ ພິກຂຸທັງຫຼາຍ ເຮົາຮຽກພິກຂຸນີ້ວ່າ ຜູ້ເຮັດໃຫ້ມານຕາບອດ ຄື ເປັນຜູ້ທີ່ມານໃຈບາບແນມບໍ່ເຫັນ ຍ້ອນທຳລາຍຈັກຂຸຂອງມານຢ່າງບໍ່ມີຮ່ອງຮອຍ ເປັນຜູ້ຂ້າມຕັນຫາ ທີ່ຊື່ວ່າວິສັດຕິກາໃນໂລກໄດ້ແລ້ວ ຍ່ອມວາງໃຈຢ່າງ ຢືນ ນັ່ງ ນອນ ຂໍ້ນັ້ນຍ້ອນເຫດອັນໃດ ຍ້ອນບໍ່ໄດ້ພົບມານໃຈບາບ ລວມຄວາມວ່າ ເນື້ອໃນປ່າ ບໍ່ໄດ້ຖືກຜູກມັດໄວ້ ຍ່ອມໄປຫາອາຫານໄດ້ຕາມຄວາມພໍໃຈສັນໃດ

ຄຳວ່າ ວິຍຍູ ໃນຄຳວ່າ ວິນຍູຊົນ ເມື່ອເພ່ງເຫັນທຳທີ່ໃຫ້ເຖິງຄວາມເສຣີ ໄດ້ແກ່ ວິຍຍູ ຄື ບັນດິດ ຜູ້ມີປັນຍາ ມີປັນຍາເຄື່ອງຕັດສະຣູ້ ມີຍານ ມີປັນຍາເຫັນແຈ້ງ ມີປັນຍາເຄື່ອງທຳລາຍກິເລດ

ຄຳວ່າ ຊົນ ໄດ້ແກ່ ຜູ້ຂ້ອງ ມານົບ ບຸຣຸດ ບຸກຄົນ ຜູ້ມີຊີວິດ ຜູ້ເກີດ ສັດຜູ້ເກີດ ຜູ້ເປັນໄປຕາມກຳ ມະນຸດ

ຄຳວ່າ ຄວາມເສຣີ ໄດ້ແກ່ ຄວາມເສຣີ ໒ ຢ່າງ ຄື

໑. ທຳເສຣີ
໒. ບຸກຄົນເສຣີ

ທຳເສຣີ ເປັນແນວໃດ?

ຄື ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ນີ້ຮຽກວ່າທຳເສຣີ

ບຸກຄົນເສຣີ ເປັນແນວໃດ?

ຄື ບຸກຄົນຜູ້ປະກອບດ້ວຍທຳເສຣີ ນີ້ຮຽກວ່າ ບຸກຄົນເສຣີ

ຄຳວ່າ ວິນຍູຊົນ ເມື່ອເພ່ງເຫັນທຳທີ່ໃຫ້ເຖິງຄວາມເສຣີ ອະທິບາຍວ່າ ວິນຍູຊົນ ເມື່ອເພ່ງເຫັນ ຄື ແນມເຫັນ ແນມເບິ່ງ ເພ່ງພິນິດ ພິຈາລະນາເຫັນທຳທີ່ໃຫ້ເຖິງຄວາມເສຣີ ລວມ

ຄວາມວ່າ ວິນຍູຊົນ ເມື່ອເພ່ງເຫັນທຳທີ່ໃຫ້ເຖິງຄວາມເສຣີ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນ ຈຶ່ງກ່າວວ່າ

ເນື້ອໃນປ່າ ບໍ່ໄດ້ຖືກຜູກມັດໄວ້
ຍ່ອມໄປຫາອາຫານໄດ້ຕາມຄວາມພໍໃຈ ສັນໃດ
ວິນຍູຊົນເມື່ອເພ່ງເຫັນທຳທີ່ໃຫ້ເຖິງຄວາມເສຣີ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ສັນນັ້ນ

[໑໘໓] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ໃນທ່າມກາງສະຫາຍ ຍ່ອມມີການປຶກສາກັນໃນເລື້ອງບ່ອນຢູ່
ເລື້ອງການດຳຣົງຕົນ ເລື້ອງການໄປ ເລື້ອງການທ່ຽວຈາຣິກ
ບຸກຄົນເມື່ອເພ່ງເຫັນການບວດອັນໃຫ້ເຖິງຄວາມເສຣີ
ທີ່ພວກຄົນພານບໍ່ມຸ້ງຫວັງ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໓)

ຄຳວ່າ ໃນທ່າມກາງສະຫາຍ ຍ່ອມມີການປຶກສາກັນໃນເລື້ອງບ່ອນຢູ່ ເລື້ອງການດຳຣົງຕົນ ເລື້ອງການໄປ ເລື້ອງການທ່ຽວຈາຣິກ ອະທິບາຍວ່າ ການມາສະບາຍ ການໄປສະບາຍ ການໄປການມາສະບາຍ ການຢືນສະບາຍ ການນັ່ງສະບາຍ ການນອນສະບາຍ ການທັກທາຍສະບາຍ ການສົນທະນາສະບາຍ ການເຈຣະຈາສະບາຍ ການສົນທະນາປາໄສສະບາຍກັບຊົນເຫຼົ່າໃດ ຊົນເຫຼົ່ານັ້ນ ຮຽກວ່າ ສະຫາຍ

ຄຳວ່າ ໃນທ່າມກາງສະຫາຍ ຍ່ອມມີການປຶກສາກັນໃນເລື້ອງບ່ອນຢູ່ ເລື້ອງການດຳຣົງຕົນ ເລື້ອງການໄປ ເລື້ອງການທ່ຽວຈາຣິກ ອະທິບາຍວ່າ ໃນທ່າມກາງສະຫາຍ ຍ່ອມມີການປຶກສາເພື່ອປະໂຫຍດຕົນ ການປຶກສາເພື່ອປະໂຫຍດຄົນອື່ນ ການປຶກສາເພື່ອປະໂຫຍດທັງສອງຝ່າຍ ການປຶກສາເພື່ອປະໂຫຍດໃນພົບປັດຈຸບັນ ການປຶກສາເພື່ອປະໂຫຍດໃນພົບໜ້າ ການປຶກສາເພື່ອປະໂຫຍດຊັ້ນປະເສີດ ໃນເລື້ອງບ່ອນຢູ່ແດ່ ເລື້ອງການດຳຣົງຕົນແດ່ ເລື້ອງການໄປແດ່ ເລື້ອງການທ່ຽວຈາຣິກແດ່ ລວມຄວາມວ່າ ໃນທ່າມກາງສະຫາຍ ຍ່ອມມີການປຶກສາກັນໃນເລື້ອງບ່ອນຢູ່ ເລື້ອງການດຳຣົງຕົນ ເລື້ອງການໄປ ເລື້ອງການທ່ຽວຈາຣິກ

ຄຳວ່າ ບຸກຄົນເມື່ອເພ່ງເຫັນການບວດອັນໃຫ້ເຖິງຄວາມເສຣີທີ່ພວກຄົນພານບໍ່ມຸ້ງຫວັງ ອະທິບາຍວ່າ ເລື້ອງທີ່ພວກຄົນພານ ອະສັດຕະບຸຣຸດ ພວກເດຍຣະຖີ ສາວົກຂອງເດຍຣະຖີ ບໍ່ມຸ້ງຫວັງ ຄື ເລື້ອງການແຖຜົມ ແລະການນຸ່ງຫົ່ມຜ້າກາສະວະ (ສ່ວນ) ເລື້ອງທີ່ບັນດິດ ສັດຕະບຸຣຸດ ພຸດທະສາວົກ ພຣະປັດເຈກສຳພຸດທະເຈົ້າ ມຸ້ງຫວັງ ຄື ເລື້ອງການແຖຜົມແລະການ ນຸ່ງຫົ່ມຜ້າກາສະວະ

ຄຳວ່າ ຄວາມເສຣີ ໄດ້ແກ່ ຄວາມເສຣີ ໒ ຢ່າງ ຄື

໑. ທຳເສຣີ
໒. ບຸກຄົນເສຣີ

ທຳເສຣີ ເປັນແນວໃດ?

ຄື ສະຕິປັດຖານ ໔ ຯລຯ ອະຣິຍະມັກມີອົງ ໘ ນີ້ຮຽກວ່າ ທຳເສຣີ

ບຸກຄົນເສຣີ ເປັນແນວໃດ?

ຄື ບຸກຄົນຜູ້ປະກອບດ້ວຍທຳເສຣີນີ້ ຮຽກວ່າ ບຸກຄົນເສຣີ

ຄຳວ່າ ບຸກຄົນເມື່ອເພ່ງເຫັນການບວດອັນໃຫ້ເຖິງຄວາມເສຣີທີ່ພວກຄົນພານບໍ່ມຸ້ງຫວັງ ອະທິບາຍວ່າ ບຸກຄົນເພ່ງເຫັນ ຄື ແນມເຫັນ ແນມເບິ່ງ ເພ່ງພິນິດ ພິຈາລະນາທຳອັນໃຫ້ເຖິງຄວາມ ເສຣີຢູ່ ລວມຄວາມວ່າ ບຸກຄົນເມື່ອເພ່ງເຫັນການບວດອັນໃຫ້ເຖິງຄວາມເສຣີ ທີ່ພວກຄົນພານບໍ່ມຸ້ງຫວັງ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້າຈຶ່ງກ່າວວ່າ

ໃນທ່າມກາງສະຫາຍ ຍ່ອມມີການປຶກສາກັນໃນເລື້ອງບ່ອນຢູ່
ເລື້ອງການດຳຣົງຕົນ ເລື້ອງການໄປ ເລື້ອງການທ່ຽວຈາຣິກ
ບຸກຄົນເມື່ອເພ່ງເຫັນການບວດອັນໃຫ້ເຖິງຄວາມເສຣີ
ທີ່ພວກຄົນພານບໍ່ມຸ້ງຫວັງ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໘ກ] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ໃນທ່າມກາງສະຫາຍ ຍ່ອມມີການຫຼິ້ນ ມີຄວາມຍິນດີ
ແລະໃນບຸດກໍຍ່ອມມີຄວາມຮັກອັນໄພບູນ
ບຸກຄົນເມື່ອຮັງກຽດຄວາມພັດພາກຈາກສິ່ງເປັນທີ່ຮັກ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (ກ)

## ວ່າດ້ວຍການຫຼິ້ນ ໒ ຢ່າງ

ຄຳວ່າ ການຫຼິ້ນ ໃນຄຳວ່າ ໃນທ່າມກາງສະຫາຍ ຍ່ອມມີການຫຼິ້ນ ມີຄວາມຍິນດີ ໄດ້ແກ່ ການຫຼິ້ນ ໒ ຢ່າງ ຄື

໑. ການຫຼິ້ນທາງກາຍ
໒. ການຫຼິ້ນທາງວາຈາ

ການຫຼິ້ນທາງກາຍ ເປັນແນວໃດ?

ຄື ຄົນຍ່ອມຫຼິ້ນກິລາບັງຄັບຊ້າງ ຫຼິ້ນກິລາບັງຄັບມ້າ ຫຼິ້ນລົດ ຫຼິ້ນທະນູ ຫຼິ້ນ ໝາກຣຸກ ແຖວລະ ໘ ຕາ ຫຼືຫຼິ້ນໝາກແຖວລະ ໑໐ ຕາ ຫຼິ້ນໝາກເກັບ ຫຼິ້ນດວດ ຫຼິ້ນໝາກໄຫວ ຫຼິ້ນໂຍນບ້ວງ ຫຼິ້ນໄມ້ຫຶ່ງ ຫຼິ້ນຟາດໃຫ້ເປັນຮູບຕ່າງ ໆ ຫຼິ້ນສະກາ ຫຼິ້ນເປົ່າໃບໄມ້ ຫຼິ້ນໄຖນ້ອຍ ໆ ຫຼິ້ນປັ້ນຫຼັງກາ ຫຼິ້ນໝາກປີ່ນ ຫຼິ້ນຕວງຊາຍ ຫຼິ້ນລົດນ້ອຍ ໆ ຫຼິ້ນ ທະນູນ້ອຍ ໆ ຫຼິ້ນຂຽນທວາຍ ຫຼິ້ນທວາຍໃຈ ຫຼິ້ນລໍ້ລຽນຄົນພິການ ນີ້ຊື່ວ່າການຫຼິ້ນທາງກາຍ

ການຫຼິ້ນທາງວາຈາ ເປັນແນວໃດ?

ຄື ການທຳສຽງກອງດ້ວຍປາກ ເຮັດສຽງພິນພາດດ້ວຍປາກ ຫຼິ້ນຮົວກອງດ້ວຍປາກ ຜິວປາກ ກະເດາະປາກ ເປົ່າປາກ ຊ້ອມເພງ ໂຫ່ຮ້ອງ ຂັບຮ້ອງ ຫຼິ້ນຕະລົກ ນີ້ຊື່ວ່າການຫຼິ້ນທາງວາຈາ

ຄຳວ່າ ຄວາມຍິນດີ ອະທິບາຍວ່າ ຄຳວ່າ ຄວາມຍິນດີ ເປັນຊື່ຮຽກຄວາມບໍ່ເບື່ອໜ່າຍ

ຄຳວ່າ ໃນທ່າມກາງສະຫາຍ ອະທິບາຍວ່າ ການມາສະບາຍ ການໄປສະບາຍ ການໄປການມາສະບາຍ ການຢືນສະບາຍ ການນັ່ງສະບາຍ ການນອນສະບາຍ ການທັກທາຍສະບາຍ ການສົນທະນາສະບາຍ ການເຈລະຈາສະບາຍ ການສົນທະນາປາໄສສະບາຍກັບຊົນເຫຼົ່າໃດ ຊົນເຫຼົ່ານັ້ນ ຮຽກວ່າ ສະຫາຍ

ຄຳວ່າ ໃນທ່າມກາງສະຫາຍ ຍ່ອມມີການຫຼິ້ນ ມີຄວາມຍິນດີ ອະທິບາຍວ່າ ການຫຼິ້ນ ແລະຄວາມຍິນດີ ກໍມີຢູ່ໃນທ່າມກາງສະຫາຍ ລວມຄວາມວ່າ ໃນທ່າມກາງສະຫາຍຍ່ອມມີ ການຫຼິ້ນ ມີຄວາມຍິນດີ

ຄຳວ່າ ແລະໃນບຸດກໍຍ່ອມມີຄວາມຮັກອັນໄພບູນ ອະທິບາຍວ່າ

ຄຳວ່າ ບຸດ ໄດ້ແກ່ ບຸດ ໔ ຈຳພວກ ຄື

໑. ບຸດເກີດຈາກຕົນ
໒. ບຸດເກີດໃນເຂດ
໓. ບຸດທີ່ເຂົາໃຫ້
໔. ບຸດທີ່ຢູ່ໃນສຳນັກ

ຄຳວ່າ ແລະໃນບຸດກໍຍ່ອມມີຄວາມຮັກອັນໄພບູນ ອະທິບາຍວ່າ ຄວາມຮັກທີ່ນ້ອມໄປໃນບຸດກໍມີຢູ່ ລວມຄວາມວ່າ ແລະໃນບຸດກໍຍ່ອມມີຄວາມຮັກອັນໄພບູນ

## ວ່າດ້ວຍສິ່ງເປັນທີ່ຮັກ ໒ ຈຳພວກ

ຄຳວ່າ ບຸກຄົນເມື່ອຮັງກຽດຄວາມພັດພາກຈາກສິ່ງເປັນທີ່ຮັກ ອະທິບາຍວ່າ ສິ່ງເປັນທີ່ຮັກ ໒ ຈຳພວກ ຄື (໑) ສັດທີ່ເປັນທີ່ຮັກ (໒) ສັງຂານທີ່ເປັນທີ່ຮັກ

ສັດເຫຼົ່າໃດເປັນທີ່ຮັກ ສັດທັງຫຼາຍໃນໂລກນີ້ ເປັນຜູ້ປາຖະໜາແຕ່ສິ່ງທີ່ເປັນປະໂຫຍດ ປາຖະໜາແຕ່ສິ່ງທີ່ເກື້ອກູນ ປາຖະໜາແຕ່ຄວາມຜາສຸກ ປາຖະໜາແຕ່ຄວາມຫຼຸດພົ້ນຈາກໂຍຄະ

ຄື ມານດາ ບິດາ ອ້າຍນ້ອງຊາຍ ເອື້ອຍນ້ອງສາວ ບຸດ ທິດາ ມິດ ອຳມາດ ຍາດພີ່ນ້ອງ ຫຼື ຜູ້ຮ່ວມສາຍໂລຫິດ ສັດເຫຼົ່ານີ້ ຊື່ວ່າສິ່ງເປັນທີ່ຮັກ

ສັງຂານເຫຼົ່າໃດເປັນທີ່ຮັກ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ອັນໜ້າພໍໃຈ ສັງຂານເຫຼົ່ານີ້ ຊື່ວ່າສິ່ງເປັນທີ່ຮັກ

ຄຳວ່າ ບຸກຄົນເມື່ອຮັ່ງກຽດຄວາມພັດພາກຈາກສິ່ງເປັນທີ່ຮັກ ອະທິບາຍວ່າ ບຸກຄົນ ເມື່ອຮັ່ງກຽດ ຄື ອຶດອັດ ເບື່ອໜ່າຍຄວາມພັດພາກຈາກສິ່ງເປັນທີ່ຮັກ ລວມຄວາມວ່າ ບຸກຄົນເມື່ອຮັ່ງກຽດຄວາມພັດພາກຈາກສິ່ງເປັນທີ່ຮັກ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ໃນທ່າມກາງສະຫາຍ ຍ່ອມມີການຫຼິ້ນ ມີຄວາມຍິນດີ
ແລະໃນບຸດກໍຍ່ອມມີຄວາມຮັກອັນໄພບູນ
ບຸກຄົນເມື່ອຮັ່ງກຽດຄວາມພັດພາກຈາກສິ່ງເປັນທີ່ຮັກ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໘໗] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ພຣະປັດເຈກສຳພຸດທະເຈົ້າແຜ່ເມດຕາໄປທັງ ໔ ທິດ
ບໍ່ຂັດເຄືອງ ຍິນດີດ້ວຍປັດໄຈຕາມມີຕາມໄດ້
ຄອບງຳອັນຕະລາຍທັງຫຼາຍ ແລະບໍ່ຫວາດສຽວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໗)

ຄຳວ່າ ທັງ ໔ ທິດ ໃນຄຳວ່າ ພຣະປັດເຈກສຳພຸດທະເຈົ້າ ແຜ່ເມດຕາໄປທັງ ໔ ທິດ ບໍ່ຂັດເຄືອງ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນມີເມດຕາຈິດແຜ່ໄປຕະຫຼອດທິດໜຶ່ງ ທິດ ໒ ຯລຯ ທິດ ໓ ຯລຯ ທິດ ໔ ທັງເບື້ອງເທິງເບື້ອງລຸ່ມ ເບື້ອງຂວາງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ພຣະປັດເຈກສຳພຸດທະເຈົ້າມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸເປກຂາຈິດ ແຜ່ໄປຕະຫຼອດທິດໜຶ່ງ ທິດ ໒ ຯລຯ ທິດ ໓ ຯລຯ ທິດ ໔ ທັງເບື້ອງເທິງເບື້ອງລຸ່ມ ເບື້ອງຂວາງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານດ້ວຍອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ຄຳວ່າ ພຣະປັດເຈກສຳພຸດທະເຈົ້າແຜ່ເມດຕາໄປທັງ ໔ ທິດ ບໍ່ຂັດເຄືອງ ອະທິບາຍວ່າ ຍ້ອນພຣະປັດເຈກສຳພຸດທະເຈົ້າເປັນຜູ້ຈະເລີນເມດຕາ ເຫຼົ່າສັດໃນທິດຕາເວັນອອກ ກໍບໍ່ເປັນທີ່ກຽດຊັງ ເຫຼົ່າສັດໃນທິດຕາເວັນຕົກ ທິດໃຕ້ ທິດເໜືອ ທິດຕາເວັນອອກສຽງໃຕ້ (ອາຄະເນ) ທິດຕາເວັນຕົກສຽງເໜືອ (ພາຍັບ) ທິດຕາເວັນຕົກສຽງໃຕ້ (ຫໍຣະດີ) ທິດຕາເວັນອອກສຽງເໜືອ (ອີ

ສານ) ທິດເບື້ອງຕ່ຳ ທິດເບື້ອງເທິງ ເຫຼົ່າສັດໃນທິດໃຫຍ່ ທິດນ້ອຍ ກໍບໍ່ເປັນທີ່ກຽດຊັງ ຍ້ອນພຣະປັດເຈກສຳພຸດທະເຈົ້າເປັນຜູ້ຈະເລີນກະລຸນາ ຯລຯ ຍ້ອນພຣະປັດເຈກສຳພຸດທະເຈົ້າເປັນຜູ້ຈະເລີນມຸທິຕາ ຯລຯ ຍ້ອນພຣະປັດເຈກສຳພຸດທະເຈົ້າເປັນຜູ້ຈະເລີນອຸເປກຂາ ເຫຼົ່າສັດໃນທິດຕາເວັນອອກກໍບໍ່ເປັນທີ່ກຽດຊັງຯລຯ ເຫຼົ່າສັດໃນທິດໃຫຍ່ທິດນ້ອຍ ກໍບໍ່ເປັນທີ່ກຽດຊັງ ລວມຄວາມວ່າ ພຣະປັດເຈກສຳພຸດທະເຈົ້າແຜ່ເມດຕາໄປທັງ ໘ ທິດ ບໍ່ຂັດເຄືອງ

## ວ່າດ້ວຍຍິນດີດ້ວຍປັດໄຈຕາມມີຕາມໄດ້

ຄຳວ່າ ຍິນດີດ້ວຍປັດໄຈຕາມມີຕາມໄດ້ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນເປັນຜູ້ສັນໂດດດ້ວຍຈີວອນຕາມມີຕາມໄດ້ ແລະກ່າວສັນເສີນຄວາມສັນໂດດດ້ວຍຈີວອນຕາມມີຕາມໄດ້ ທັງບໍ່ປະກອບການສະແຫວງຫາຜິດ ທີ່ບໍ່ສົມຄວນຍ້ອນເຫດແຫ່ງຈີວອນ ບໍ່ໄດ້ຈີວອນກໍບໍ່ກະວົນກະວາຍ ແລະໄດ້ຈີວອນແລ້ວກໍບໍ່ຕິດໃຈ ບໍ່ຫຼົງ ບໍ່ພົວພັນ ເບິ່ງເຫັນໂທດມີປັນຍາເຄື່ອງສະລັດອອກ ໃຊ້ສອຍຢູ່ ອັນໜຶ່ງ ຍ້ອນຄວາມສັນໂດດດ້ວຍຈີວອນຕາມມີຕາມໄດ້ນັ້ນ ທ່ານຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ພຣະປັດເຈກສຳພຸດທະເຈົ້າໃດ ດຸໝັ່ນ ບໍ່ຂີ້ຄ້ານ ມີຄວາມຮູ້ຕົວ ມີສະຕິກຳກັບໃນຄວາມສັນໂດດດ້ວຍຈີວອນນັ້ນ ພຣະປັດເຈກສຳພຸດທະເຈົ້ານີ້ຮຽກໄດ້ວ່າ ດຳຣົງຢູ່ໃນອະຣິຍະວົງທີ່ຮູ້ກັນວ່າດີເລີດ ເປັນຂອງເກົ່າ

ອີກໄນໜຶ່ງ ພຣະປັດເຈກສຳພຸດທະເຈົ້າເປັນຜູ້ສັນໂດດດ້ວຍບິນທະບາດຕາມມີຕາມໄດ້ ແລະກ່າວສັນເສີນຄວາມສັນໂດດດ້ວຍບິນທະບາດຕາມມີຕາມໄດ້ ທັງບໍ່ປະກອບການສະແຫວງຫາຜິດ ທີ່ບໍ່ສົມຄວນຍ້ອນເຫດແຫ່ງບິນທະບາດ ບໍ່ໄດ້ບິນທະບາດກໍບໍ່ກະວົນກະວາຍ ແລະໄດ້ບິນທະບາດແລ້ວກໍບໍ່ຕິດໃຈ ບໍ່ຫຼົງ ບໍ່ພົວພັນ ເບິ່ງເຫັນໂທດ ມີປັນຍາເຄື່ອງ ສະລັດອອກ ບໍຣິໂພກຢູ່ ອັນໜຶ່ງ ຍ້ອນຄວາມສັນໂດດດ້ວຍບິນທະບາດຕາມມີຕາມໄດ້ນັ້ນ ທ່ານຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ພຣະປັດເຈກສຳພຸດທະເຈົ້າໃດ ດຸໝັ່ນ ບໍ່ຂີ້ຄ້ານ ມີຄວາມຮູ້ຕົວ ມີສະຕິກຳກັບໃນຄວາມສັນໂດດດ້ວຍບິນທະບາດນັ້ນ ພຣະປັດເຈກສຳພຸດທະເຈົ້ານີ້ ຮຽກໄດ້ວ່າ ດຳຣົງຢູ່ໃນອະຣິຍະວົງທີ່ຮູ້ກັນວ່າດີເລີດ ເປັນຂອງເກົ່າ

ອີກໄນໜຶ່ງ ພຣະປັດເຈກສຳພຸດທະເຈົ້ານັ້ນເປັນຜູ້ສັນໂດດດ້ວຍເສນາສະນະຕາມມີຕາມໄດ້ ແລະກ່າວສັນເສີນຄວາມສັນໂດດດ້ວຍເສນາສະນະຕາມມີຕາມໄດ້ ທັງບໍ່ປະກອບການສະແຫວງຫາຜິດ ທີ່ບໍ່ສົມຄວນຍ້ອນເຫດແຫ່ງເສນາສະນະ ບໍ່ໄດ້ເສນາສະນະກໍບໍ່ກະວົນກະວາຍ ແລະໄດ້ເສນາສະນະແລ້ວກໍບໍ່ຕິດໃຈ ບໍ່ຫຼົງ ບໍ່ພົວພັນ ເບິ່ງເຫັນໂທດ ມີປັນຍາເຄື່ອງສະລັດອອກ ໃຊ້ສອຍຢູ່ ອັນໜຶ່ງ ຍ້ອນຄວາມສັນໂດດດ້ວຍເສນາສະນະຕາມມີຕາມໄດ້ນັ້ນ ທ່ານ ຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ

ພຣະປັດເຈກສຳພຸດທະເຈົ້າໃດ ດຸໜັ່ນ ບໍ່ຂີ້ຄ້ານ ມີຄວາມຮູ້ຕົວ ມີສະຕິກຳກັບໃນຄວາມສັນໂດດດ້ວຍເສນາສະນະນັ້ນ ພຣະປັດເຈກສຳພຸດທະເຈົ້ານີ້ ຮຽກໄດ້ວ່າ ດຳຣົງຢູ່ໃນອະຣິຍະວົງທີ່ຮູ້ກັນວ່າດີເລີດ ເປັນຂອງເກົ່າ

ອີກໄນໜຶ່ງ ພຣະປັດເຈກສຳພຸດທະເຈົ້ານັ້ນເປັນຜູ້ສັນໂດດດ້ວຍຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ ແລະກ່າວສັນເສີນຄວາມສັນໂດດດ້ວຍຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ ທັງບໍ່ປະກອບການສະແຫວງຫາຜິດ ທີ່ບໍ່ສົມຄວນຍ້ອນເຫດແຫ່ງຄິລານະປັດໄຈເພສັດບໍຣິຂານ ບໍ່ໄດ້ຄິລານະປັດໄຈເພສັດບໍຣິຂານກໍບໍ່ກະວົນກະວາຍ ແລະໄດ້ຄິລານະປັດໄຈເພສັດບໍຣິຂານແລ້ວກໍບໍ່ຕິດໃຈ ບໍ່ຫຼົງ ບໍ່ພົວພັນ ເບິ່ງເຫັນໂທດ ມີປັນຍາເຄື່ອງ ສະລັດອອກ ບໍຣິໂພກຢູ່

ອັນໜຶ່ງ ຍ້ອນຄວາມສັນໂດດດ້ວຍຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ນັ້ນ ທ່ານຈຶ່ງບໍ່ຍົກຕົນ ບໍ່ຂົ່ມຜູ້ອື່ນ ພຣະປັດເຈກສຳພຸດທະເຈົ້າໃດດຸໜັ່ນ ບໍ່ຂີ້ຄ້ານ ມີຄວາມຮູ້ຕົວມີສະຕິກຳກັບໃນຄວາມສັນໂດດດ້ວຍຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ນັ້ນ ພຣະປັດເຈກສຳພຸດທະເຈົ້ານີ້ ຮຽກໄດ້ວ່າ ດຳຣົງຢູ່ໃນອະຣິຍະວົງທີ່ຮູ້ກັນວ່າດີເລີດ ເປັນຂອງເກົ່າ ລວມຄວາມວ່າຍິນດີດ້ວຍປັດໄຈຕາມມີຕາມໄດ້

## ວ່າດ້ວຍອັນຕະລາຍ ໒ ຢ່າງ

ຄຳວ່າ ອັນຕະລາຍ ໃນຄຳວ່າ ຄອບງຳອັນຕະລາຍທັງຫຼາຍ ແລະບໍ່ຫວາດສຽວໄດ້ແກ່ອັນຕະລາຍ ໒ ຢ່າງ ຄື (໑) ອັນຕະລາຍທີ່ຜາກົດ (໒) ອັນຕະລາຍທີ່ບໍ່ຜາກົດ

ອັນຕະລາຍທີ່ຜາກົດ ຄື ອັນໃດ?

ຄື ຣາດຊະສີ ເສືອໂຄ່ງ ເສືອເຫຼືອງ ໝີ ເສືອດາວ ໝາປ່າ ງົວ ກະບື ຊ້າງ ງູ ແມງງອດ ຂີ້ເຂັບ ໂຈນ ຄົນທີ່ໄດ້ກໍ່ກຳໄວ້ ຫຼື ຍັງບໍ່ໄດ້ກໍ່ກຳໄວ້ ໂຣກທາງຕາ ໂຣກທາງຫູ ໂຣກທາງດັງ ໂຣກທາງລີ້ນ ໂຣກທາງກາຍ ໂຣກຫົວ ໂຣກຫູ ໂຣກປາກ ໂຣກແຂ້ວ ໂຣກໄອ ໂຣກຫືດ ໂຣກຫວັດ ໂຣກໄຂ້ພິດ ໄຂ້ເຊື່ອງຊຶມ ໂຣກທ້ອງ ເປັນລົມສະຫລົບ ລົງແດງ ຈຸກສຽດ ອະຫິວາຕະກະໂຣກ ໂຣກຂີ້ທູດ ຝີ ກາກ ມອງຄໍ່ ລົມບ້າໝູ ຫິດເປື່ອຍ ຫິດດ້ານຫິດ ທູດ ໂຣກລະລອກ ໂຣກບິຊ່ານ ໂຣກເບົາຫວານ ໂຣກເຣີມ ໂຣກພຸພອງ ໂຣກຣິດສີດວງທະວານ ຄວາມເຈັບປ່ວຍທີ່ເກີດຈາກບີ ຄວາມເຈັບປ່ວຍທີ່ເກີດຈາກເສມຫະ ຄວາມເຈັບປ່ວຍທີ່ເກີດຈາກລົມ ໄຂ້ສັນນິບາດ ຄວາມເຈັບປ່ວຍທີ່ເກີດຈາກການປ່ຽນລະດູການ ຄວາມເຈັບປ່ວຍທີ່ເກີດຈາກການຜັດປ່ຽນອິລິຍາບົດບໍ່ໄດ້ສ່ວນກັນ ຄວາມເຈັບປ່ວຍທີ່ເກີດຈາກຄວາມພາກພຽນເກີນກຳລັງ ຄວາມເຈັບປ່ວຍທີ່ເກີດຈາກຜົນກຳ ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ປວດອຸດຈາຣະປວດປັດສາວະ ຄວາມເຈັບປ່ວຍທີ່ເກີດຈາກ ສຳຜັດເຫຼືອດ ຍຸງ ລົມ ແດດ ແລະສັດເລືອຄານເຫຼົ່ານີ້ຮຽກວ່າ ອັນຕະລາຍທີ່ຜາກົດ

ອັນຕະລາຍທີ່ບໍ່ຜາກົດ ຄືອັນໃດ?

ຄື ກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ກາມສັນທະນິວອນ ພະຍາບາດນິວອນ ຖີນະມິທທະນິວອນ ອຸດທັດຈະກຸກກຸຈຈະນິວອນ ວິຈິກິດສານິວອນ ຣາຄະ ໂທສະ ໂມຫະ ໂກທະ ອຸປະນາຫະ ມັກຂະ ປະລາສະ ອິດສາ ມັດສະຣິຍະ ມາຍາ ສາເຖີຍຍະ ຖໍາພະ ສາຣໍາພະ ມານະ ອະຕິມານະ ມະທະ ປະມາທະ ກິເລດທຸກຊະນິດ ທຸດຈະຣິດທຸກທາງ ຄວາມກະວົນກະວາຍທຸກຢ່າງ ຄວາມຮ້ອນຮົນທຸກສະຖານ ຄວາມເດືອດຮ້ອນທຸກປະການ ອະກຸສະລາພິສັງຂານທຸກປະເພດ ເຫຼົ່ານີ້ຮຽກວ່າ ອັນຕະລາຍທີ່ບໍ່ຜາກົດ

ຄໍາວ່າ ອັນຕະລາຍ ອະທິບາຍວ່າ ຊື່ວ່າອັນຕະລາຍ ຍ້ອນມີຄວາມໝາຍແນວໃດ ຊື່ວ່າອັນຕະລາຍ ຍ້ອນຄອບງໍາ ຊື່ວ່າອັນຕະລາຍ ຍ້ອນເປັນໄປເພື່ອຄວາມເສື່ອມ ຊື່ວ່າອັນຕະລາຍຍ້ອນເປັນອະກຸສົນທໍາທີ່ອາໄສຢູ່ໃນອັດຕະພາບ

ທີ່ຊື່ວ່າອັນຕະລາຍ ຍ້ອນຄອບງໍາ ເປັນແນວໃດ?

ຄື ອັນຕະລາຍເຫຼົ່ານັ້ນຍ່ອມເຂົ້າຄອບຄອງ ຢຶດຄອງ ຄອບງໍາ ຖ້ວມທັບ ຮັດຄືງ ຍໍ່າຍີບຸກຄົນນັ້ນ ທີ່ຊື່ວ່າອັນຕະລາຍຍ້ອນຄອບງໍາ ເປັນແນວນີ້

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນໄປເພື່ອຄວາມເສື່ອມ ເປັນແນວໃດ?

ຄື ອັນຕະລາຍເຫຼົ່ານັ້ນ ຍ່ອມເປັນໄປເພື່ອຄວາມສູນ ເພື່ອຄວາມເສື່ອມໄປແຫ່ງ

ກຸສົນທໍາທັງຫຼາຍ ກຸສົນທໍາອັນໃດແດ່ ອັນຕະລາຍເຫຼົ່ານັ້ນ ຍ່ອມເປັນໄປເພື່ອຄວາມສູນເພື່ອຄວາມເສື່ອມໄປແຫ່ງກຸສົນທໍາເຫຼົ່ານີ້ ຄື ການປະຕິບັດຊອບ ການປະຕິບັດເໝາະສົມ ການປະຕິບັດທີ່ບໍ່ເປັນຂ້າເສິກ ການປະຕິບັດບໍ່ພາດຄາດເຄື່ອນ ການປະຕິບັດທີ່ເອື້ອປະໂຫຍດ

ການປະຕິບັດທໍາຖືກຕ້ອງຕາມຫຼັກທໍາ ການຮັກສາສິນໃຫ້ບໍລິບູນ ຄວາມເປັນຜູ້ສັງລວມອິນຊີທັງ ໖ ຄື ຕາ ຫູ ດັງ ລີ້ນ ກາຍ ໃຈ ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ

ອາຫານ ຄວາມເປັນຜູ້ມີຄວາມພຽນເປັນເຄື່ອງຕື່ນຢູ່ສະເໝີ ສະຕິສໍາປະຊັນຍະ ຄວາມໝັ່ນຈະເລີນສະຕິປັດຖານ ໔ ຄວາມໝັ່ນຈະເລີນສໍາມັບປະທານ ໔ ຯລຯ ອິດທິບາດ ໔ ຯລຯ ອິນຊີ ໕ ຯລຯ ພະລະ ໕ ຯລຯ ໂພດຊົງ ໗ ຄວາມໝັ່ນຈະເລີນອະຣິຍະມັກມີອົງ ໘ ທີ່ຊື່ວ່າອັນຕະລາຍ ຍ້ອນເປັນໄປເພື່ອຄວາມເສື່ອມ ເປັນແນວນີ້

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນກໍາທີ່ອາໄສຢູ່ໃນອັດຕະພາບ ເປັນແນວໃດ?

ຄື ບາບອະກຸສົນທໍາເຫຼົ່ານີ້ ຍ່ອມເກີດຂຶ້ນໃນອັດຕະພາບນັ້ນ ມີອັດຕະພາບເປັນບ່ອນອາໄສ ປຽບເໝືອນສັດທີ່ອາໄສຮູຍ່ອມຢູ່ໃນຮູ ສັດທີ່ອາໄສນໍ້າຍ່ອມຢູ່ໃນນໍ້າ ສັດທີ່ອາໄສປ່າຍ່ອມຢູ່ໃນປ່າ ສັດທີ່ອາໄສຕົ້ນໄມ້ຍ່ອມຢູ່ເທິງຕົ້ນໄມ້ ສັນໃດ ບາບອະກຸສົນທໍາເຫຼົ່ານີ້ ຍ່ອມເກີດໃນອັດຕະພາບນັ້ນ ມີອັດຕະພາບເປັນບ່ອນອາໄສ ສັນນັ້ນຄືກັນ ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທໍາທີ່ອາໄສຢູ່ໃນອັດຕະພາບ ເປັນແນວນີ້

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວ້ວ່າ ພິກຂຸທັງຫຼາຍ ພິກຂຸຜູ້ມີອັນເຕວາສິກ[໑] ຜູ້ມີອາຈານ ຍ່ອມຢູ່ເປັນທຸກ ບໍ່ສະບາຍ

ພິກຂຸຜູ້ມີອັນເຕວາສິກ ຜູ້ມີອາຈານ ຍ່ອມຢູ່ເປັນທຸກ ບໍ່ສະບາຍ ເປັນແນວໃດ?

ຄື ບາບອະກຸສົນທຳທັງຫຼາຍ ມີຄວາມດຳຣິແຜ່ຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸໃນທຳວິໄນນີ້ ຍ້ອນເຫັນຮູບທາງຕາ ບາບອະກຸສົນທຳທັງຫຼາຍ ຍ່ອມຢູ່ ຍ່ອມຊ່ານໄປພາຍໃນຂອງພິກຂຸນັ້ນ ຍ້ອນແນວນັ້ນ ເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ມີອັນເຕວາສິກ ບາບອະກຸສົນທຳເຫຼົ່ານັ້ນ ຍ່ອມຟຸ້ງຂຶ້ນຖ້ວມພິກຂຸນັ້ນ ຍ້ອນແນວນັ້ນ ເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ມີອາຈານ

ອີກໄນໜຶ່ງ ບາບອະກຸສົນທຳທັງຫຼາຍ ມີຄວາມດຳຣິຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸ ຍ້ອນໄດ້ຍິນສຽງທາງຫູ ຯລຯ ຍ້ອນໄດ້ກິ່ນທາງດັງ ຯລຯ ຍ້ອນຊີມຣົດທາງລີ້ນ ຯລຯ ຍ້ອນໄດ້ຮັບສຳຜັດທາງກາຍ ຯລຯ ຍ້ອນຮູ້ທຳມາຣົມທາງໃຈ ບາບອະກຸສົນທຳທັງຫຼາຍ ຍ່ອມຢູ່ ຍ່ອມຊ່ານໄປພາຍໃນຂອງພິກຂຸນັ້ນ

ຍ້ອນແນວນັ້ນ ເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ມີອັນເຕວາສິກ ບາບອະກຸສົນທຳເຫຼົ່ານັ້ນ ຍ່ອມຟຸ້ງຂຶ້ນຖ້ວມພິກຂຸນັ້ນ ຍ້ອນແນວນັ້ນ ເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ມີອາຈານ ພິກຂຸຜູ້ມີອັນເຕວາສິກ ຜູ້ມີອາຈານ ຍ່ອມຢູ່ເປັນທຸກ ບໍ່ສະບາຍ ແນວນີ້ແລ ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນອັດຕະພາບ ເປັນແນວນີ້

## ວ່າດ້ວຍທຳ ໓ ປະການ ເປັນມົນທິນພາຍໃນ

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວ້ວ່າ ພິກຂຸທັງຫຼາຍ ທຳ ໓ ປະການ ເຫຼົ່ານີ້ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ ທຳ ໓ ປະການຄືອັນໃດ ຄື

໑. ໂລພະ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ

໒. ໂທສະ ຯລຯ

໓. ໂມຫະ ເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນ ເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ ທຳ ໓ ປະການເຫຼົ່ານີ້ແລ ຊື່ວ່າເປັນມົນທິນພາຍໃນ ເປັນອະມິດພາຍໃນ ເປັນສັດຕູພາຍໃນ ເປັນເພດຊະຄາດພາຍໃນ ເປັນຂ້າເສິກພາຍໃນ

(ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ)

ໂລພະກໍ່ໃຫ້ເກີດສິ່ງທີ່ບໍ່ເປັນປະໂຫຍດ
ໂລພະເຮັດໃຫ້ຈິດກຳເຮີບ ໂລພະເປັນໄພທີ່ເກີດພາຍໃນ
ຄົນ (ສ່ວນຫຼາຍ) ບໍ່ຮູ້ຈັກໄພນັ້ນ
ຄົນໂລບບໍ່ຮູ້ຈັກຜົນ ຄົນໂລບບໍ່ຮູ້ຈັກເຫດ
ຄວາມໂລບຄອບງຳນໍຣະຊົນເມື່ອໃດ
ຄວາມມືດບອດຍ່ອມມີເມື່ອນັ້ນ

ໂທສະກໍ່ໃຫ້ເກີດສິ່ງທີ່ບໍ່ເປັນປະໂຫຍດ
ໂທສະເຮັດໃຫ້ຈິດກຳເຮີບ ໂທສະເປັນໄພທີ່ເກີດພາຍໃນ
ຄົນ (ສ່ວນຫຼາຍ) ບໍ່ຮູ້ຈັກໄພນັ້ນ
ຄົນໂກດບໍ່ຮູ້ຈັກຜົນ ຄົນໂກດບໍ່ຮູ້ຈັກເຫດ
ຄວາມໂກດຄອບງຳນໍຣະຊົນເມື່ອໃດ
ຄວາມມືດບອດຍ່ອມມີເມື່ອນັ້ນ

ໂມຫະກໍ່ໃຫ້ເກີດສິ່ງທີ່ບໍ່ເປັນປະໂຫຍດ
ໂມຫະເຮັດໃຫ້ຈິດກຳເຮີບ ໂມຫະເປັນໄພທີ່ເກີດພາຍໃນ
ຄົນ (ສ່ວນຫຼາຍ) ບໍ່ຮູ້ຈັກໄພນັ້ນ
ຄົນຫຼົງບໍ່ຮູ້ຈັກຜົນ ຄົນຫຼົງບໍ່ຮູ້ຈັກເຫດ
ຄວາມຫຼົງຄອບງຳນໍຣະຊົນເມື່ອໃດ
ຄວາມມືດບອດຍ່ອມມີເມື່ອນັ້ນ

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ນອນເນື່ອງຢູ່ໃນອັດຕະພາບ ເປັນແນວນີ້ແດ່

ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ມະຫາບໍພິດ ທຳ ໓ ປະການ ເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ ທຳ ໓ ປະການຄືອັນໃດ ຄື

໑. ໂລພະທຳເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ
໒. ໂທສະທຳເມື່ອເກີດຂຶ້ນພາຍໃນ ຯລຯ
໓. ໂມຫະທຳເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດ ຍ່ອມເກີດຂຶ້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

ມະຫາບໍພິດ ທຳ ໓ ປະການເຫຼົ່ານີ້ແລ ເມື່ອເກີດຂຶ້ນພາຍໃນ (ຈິດ) ຂອງບຸຣຸດຍ່ອມເກີດຂຶ້ນເພື່ອຄວາມບໍ່ເປັນປະໂຫຍດ ເພື່ອຄວາມທຸກ ເພື່ອຄວາມຢູ່ບໍ່ຜາສຸກ

(ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາ ເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ)

ໂລພະ ໂທສະ ແລະໂມຫະ ເກີດຂຶ້ນໃນຕົນ
ຍ່ອມທຳຮ້າຍບຸຣຸດຜູ້ມີຈິດຊົ່ວຊາມ
ເໝືອນຂີໄຜ່ກຳຈັດຕົ້ນໄຜ່ ສັນນັ້ນ

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ນອນເນື່ອງຢູ່ໃນອັດຕະພາບ ເປັນແນວນີ້ແດ່ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ

ຣາຄະ ແລະໂທສະ ມີອັດຕະພາບນີ້ເປັນຕົ້ນເຫດ
ຄວາມບໍ່ຍິນດີກຸສົນທຳ
ຄວາມຍິນດີກາມມະຄຸນ ເຊິ່ງເຮັດໃຫ້ຂົນລຸກ ເກີດຈາກອັດຕະພາບນີ້
ບາບວິຕົກໃນໃຈ ເກີດຂຶ້ນຈາກອັດຕະພາບນີ້
ຍ່ອມຜູກໃຈຄົນໄວ້ ເໝືອນພວກເດັກຜູກຕີນກາໄວ້ ສັນນັ້ນ

ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ນອນເນື່ອງຢູ່ໃນອັດຕະພາບນີ້ ເປັນແນວນີ້ແດ່

ຄຳວ່າ ຄອບງຳອັນຕະລາຍທັງຫຼາຍ ອະທິບາຍວ່າ ຄອບງຳ ຄື ເຮັດໃຫ້ຍິນຍອມ ຖ້ວມທັບ ບີບຄັ້ນ ກຳຈັດອັນຕະລາຍທັງຫຼາຍ ລວມຄວາມວ່າ ຄອບງຳອັນຕະລາຍທັງຫຼາຍ

ຄຳວ່າ ບໍ່ຫວາດສຽວ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ບໍ່ຢ້ານ ຄື ບໍ່ຫວາດສຽວ ບໍ່ສະດຸ້ງ ບໍ່ໜີ ລະໄພແລະຄວາມຢ້ານກົວໄດ້ແລ້ວ ໝົດຄວາມຂົນພອງ ສະຫຍອງເກົ້າຢູ່ ລວມຄວາມວ່າ ຄອບງຳອັນຕະລາຍທັງຫຼາຍ ແລະບໍ່ຫວາດສຽວ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງ ກ່າວວ່າ

ພຣະປັດເຈກສຳພຸດທະເຈົ້າແຜ່ເມດຕາໄປທັງ ໔ ທິດ
ບໍ່ຂັດເຄືອງ ຍິນດີດ້ວຍປັດໄຈຕາມມີຕາມໄດ້
ຄອບງຳອັນຕະລາຍທັງຫຼາຍ ແລະບໍ່ຫວາດສຽວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໔໙] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ແມ່ນບັນພະຊິດພວກໜຶ່ງ ແລະຄະລືຫັດທີ່ກຳລັງຄອງເຮືອນ
ສົງເຄາະໄດ້ຍາກ
ບຸກຄົນເພິ່ງເປັນຜູ້ຂວນຂວາຍໜ້ອຍໃນຜູ້ອື່ນແລະບຸດ
ເພິ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໙)

ຄຳວ່າ ແມ່ນບັນພະຊິດພວກໜຶ່ງ ຯລຯ ສົງເຄາະໄດ້ຍາກ ອະທິບາຍວ່າ ແມ່ນ ບັນພະຊິດບາງພວກໃນທຳວິໄນນີ້ ເມື່ອອຸປັດຊາອາຈານກຳລັງໃຫ້ນິໄສ ໃຫ້ອຸດເທດ (ບາລີ) ໃຫ້ປະຣິປຸດສາ (ອັດຖະກະຖາ) ໃຫ້ຈີວອນ ໃຫ້ບາດ ໃຫ້ພາຊະນະໂລຫະ ໃຫ້ທຳມະກົກ ໃຫ້ຜ້າກອງນ້ຳ ໃຫ້ລູກດານ ໃຫ້ເກີບ ໃຫ້ປະຄົດແອວ ກໍບໍ່ຟັງ ບໍ່ງ່ຽງໂສດສະດັບ ບໍ່ຕັ້ງໃຈເພື່ອຈະຮູ້ ບໍ່ຮັບຟັງ ບໍ່ເຮັດຕາມຄຳ ປະພຶດຂັດຂືນ ເບືອນໜ້າໄປທາງອື່ນ ລວມຄວາມວ່າ ແມ່ນບັນພະຊິດພວກໜຶ່ງ ຯລຯ ສົງເຄາະໄດ້ຍາກ

ຄຳວ່າ ແລະຄະລຶຫັດທີ່ກຳລັງຄອງເຮືອນ ອະທິບາຍວ່າ ແມ່ນຄະລຶຫັດບາງພວກໃນໂລກນີ້ ເມື່ອເຂົາໃຫ້ຊ້າງຯລຯ ລົດຯລຯ ນາຯລຯ ທີ່ດິນຯລຯ ເງິນຯລຯ ຄຳຯລຯ ບ້ານເຮືອນຯລຯ ນິຄົມຯລຯ ເມືອງຯລຯ ຮັດຯລຯ ຊົນນະບົດ ກໍບໍ່ຟັງ ບໍ່ງ່ຽງໂສດສະດັບ ບໍ່ຕັ້ງໃຈເພື່ອຈະຮູ້ ບໍ່ຮັບຟັງ ບໍ່ເຮັດຕາມຄຳ ປະພຶດຂັດຂືນ ເບືອນໜ້າໄປທາງອື່ນ ລວມຄວາມວ່າ ແລະຄະລຶຫັດທີ່ກຳລັງຄອງເຮືອນ

ຄຳວ່າ ບຸກຄົນເພິ່ງເປັນຜູ້ຂວນຂວາຍໜ້ອຍໃນຜູ້ອື່ນແລະບຸດ ອະທິບາຍວ່າ ຄົນທຸກຈຳພວກ ຍົກເວັ້ນຕົນເສຍ ຊື່ວ່າຄົນອື່ນແລະບຸດ ໃນຂໍ້ຄວາມນີ້ ອະທິບາຍວ່າ ບຸກຄົນເພິ່ງເປັນຜູ້ຂວນຂວາຍໜ້ອຍ ຄື ບໍ່ໃຝ່ໃຈ ບໍ່ຫ່ວງໃຍໃນຜູ້ອື່ນແລະບຸດເຫຼົ່ານັ້ນ ລວມຄວາມວ່າ ບຸກຄົນເພິ່ງເປັນຜູ້ຂວນຂວາຍໜ້ອຍໃນຜູ້ອື່ນແລະບຸດ ເພິ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ແມ່ນບັນພະຊິດພວກໜຶ່ງ ແລະຄະລຶຫັດທີ່ກຳລັງຄອງເຮືອນ
ສົງເຄາະໄດ້ຍາກ
ບຸກຄົນເພິ່ງເປັນຜູ້ຂວນຂວາຍໜ້ອຍໃນຜູ້ອື່ນແລະບຸດ
ເພິ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໓໐] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ພຣະປັດເຈກສຳພຸດທະເຈົ້າ ຜູ້ກ້າຫານ
ປົງເຄື່ອງໝາຍຄະລຶຫັດແລ້ວ
ຕັດເຄື່ອງຜູກພັນຂອງຄະລຶຫັດແລ້ວ
ເໝືອນຕົ້ນທອງຫຼາງທີ່ໃບຮ່ວງຫຼົ່ນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໑໐)

ຄຳວ່າ ພຣະປັດເຈກສຳພຸດທະເຈົ້າ ຯລຯ ປົງເຄື່ອງໝາຍຄະລຶຫັດແລ້ວ ອະທິບາຍວ່າ ຜົມ ໜວດ ດອກໄມ້ ຂອງຫອມ ເຄື່ອງລູບໄລ້ ເຄື່ອງແຕ່ງຕົວ ເຄື່ອງປະດັບ ຜ້າ ຜ້າຫົ່ມ ຜ້າໂພກ ຜ້ານຸ່ງ ເຄື່ອງອົບ ເຄື່ອງອາບນ້ຳ ເຄື່ອງນວດ ຄັນສ່ອງ (ແວ່ນ) ຢາຢອດຕາ ພວງດອກ

ໄມ້ ຂອງຫອມ ແລະເຄື່ອງລູບໄລ້ ແປ້ງຜັດໜ້າ ສີທາປາກ ກຳໄລມື ເຄື່ອງຜູກເກົ້າຜົມ ໄມ້ການ ເທົ້າ ໂມງ ດາບ ຮົ່ມ ເກີບສວຍງາມ ກອບໜ້າ ຕາບເພັດ (ເຄື່ອງປະດັບຂໍ້ມື) ວິຂົນສັດ ຜ້າຂາວ ຜ້າຊາຍຍາວ ດັ່ງນີ້ເປັນຕົວຢ່າງ ທ່ານຮຽກວ່າ ເຄື່ອງໝາຍຄະລືຫັດ

ຄຳວ່າ ປົງເຄື່ອງໝາຍຄະລືຫັດແລ້ວ ໄດ້ແກ່ ປົງ ຄື ປົດ ປະຖິ້ມ ຣະງັບເຄື່ອງໝາຍຄະລືຫັດແລ້ວ

ຄຳວ່າ ເໝືອນຕົ້ນທອງຫຼາງທີ່ໃບຣ່ວງຫຼົ່ນແລ້ວ ອະທິບາຍວ່າ ໃບຕົ້ນທອງຫຼາງ ຂາດ ຣ່ວງຫຼົ່ນ ຄື ຕົກ ຕົກກະຈາຍແລ້ວ ສັນໃດ ເຄື່ອງໝາຍຄະລືຫັດຂອງພຣະປັດເຈກສຳພຸດທະເຈົ້າ ກໍຂາດ ຄື ຣ່ວງຫຼົ່ນ ຕົກ ຕົກກະຈາຍແລ້ວ ສັນນັ້ນ ລວມຄວາມວ່າ ເໝືອນຕົ້ນທອງຫຼາງທີ່ໃບຣ່ວງຫຼົ່ນແລ້ວ

ຄຳວ່າ ຜູ້ກ້າຫານ ໃນຄຳວ່າ ຜູ້ກ້າຫານ ຯລຯ ຕັດເຄື່ອງຜູກພັນຂອງຄະລືຫັດແລ້ວ ອະທິບາຍວ່າ

| | | |
|---|---|---|
| ພຣະປັດເຈກສຳພຸດທະເຈົ້າ | ມີວິຣິຍະ | ຈຶ່ງຊື່ວ່າຜູ້ກ້າຫານ |
| ພຣະປັດເຈກສຳພຸດທະເຈົ້າ | ອົງອາດ | ຈຶ່ງຊື່ວ່າຜູ້ກ້າຫານ |
| ພຣະປັດເຈກສຳພຸດທະເຈົ້າ | ໃຫ້ຜູ້ອື່ນພາກພຽນ | ຈຶ່ງຊື່ວ່າຜູ້ກ້າຫານ |
| ພຣະປັດເຈກສຳພຸດທະເຈົ້າ | ສາມາດ | ຈຶ່ງຊື່ວ່າຜູ້ກ້າຫານ |
| ພຣະປັດເຈກສຳພຸດທະເຈົ້າ | ກ້າຫານ | ຈຶ່ງຊື່ວ່າຜູ້ກ້າຫານ |

ພຣະປັດເຈກສຳພຸດທະເຈົ້າ ກ້າວໄປຂ້າງໜ້າ ບໍ່ຢ້ານ ບໍ່ຫວາດສຽວ ບໍ່ສະດຸ້ງ ບໍ່ໜີ ລະໄພ ແລະຄວາມຢ້ານກົວໄດ້ແລ້ວ ຈຶ່ງຊື່ວ່າຜູ້ກ້າຫານ

ພຣະປັດເຈກສຳພຸດທະເຈົ້າໝົດຄວາມຂົນພອງສະຫຍອງເກົ້າ ຈຶ່ງຊື່ວ່າ ຜູ້ກ້າຫານ

ພຣະປັດເຈກສຳພຸດທະເຈົ້າເວັ້ນຂາດຈາກບາບທຳທັງປວງໃນໂລກນີ້
ກ້າວລ່ວງທຸກໃນນະຣົກ ຢູ່ດ້ວຍຄວາມພຽນ ມີຄວາມພຽນ
ມີຄວາມມຸ້ງໝັ້ນ ແກ່ກ້າ ໝັ້ນຄົງ ຮຽກໄດ້ວ່າ ເປັນແບບນັ້ນ

ບຸດ ພັນລະຍາ ທາດຍິງ ທາດຊາຍ ແບ້ ແກະ ໄກ່ ໝູ ຊ້າງ ງົວ ມ້າ ລາ ທີ່ນາ ທີ່ສວນ ເງິນ ຄຳ ໝູ່ບ້ານ ນິຄົມ ຣາດຊະທານີ ແຄວ້ນ ຊົນນະບົດ ກອງພົນຮົບ ຄັງຫຼວງ ແລະວັດຖຸທີ່ໜ້າຍິນດີແນວໃດແນວໜຶ່ງ ຮຽກວ່າ ເຄື່ອງຜູກພັນຂອງຄະລືຫັດ

ຄຳວ່າ ຜູ້ກ້າຫານ ຯລຯ ຕັດເຄື່ອງຜູກພັນຂອງຄະລືຫັດແລ້ວ ອະທິບາຍວ່າ

ພຣະປັດເຈກສຳພຸດທະເຈົ້ານັ້ນ ເປັນຜູ້ກ້າຫານ ຕັດ ຄື ຕັດຂາດ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງ ຄວາມບໍ່ມີອີກເຊິ່ງເຄື່ອງຜູກພັນຂອງຄະລືຫັດ ລວມຄວາມວ່າ ຜູ້ກ້າຫານ

ຯລຯ ຕັດເຄື່ອງ ຜູກພັນຂອງຄະລືຫັດແລ້ວ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້າຈຶ່ງກ່າວວ່າ

ພຣະປັດເຈກສຳພຸດທະເຈົ້າ ຜູ້ກ້າຫານ
ປົງເຄື່ອງໝາຍຄະລືຫັດແລ້ວ
ຕັດເຄື່ອງຜູກພັນຂອງຄະລືຫັດແລ້ວ
ເໝືອນຕົ້ນທອງຫຼາງທີ່ໃບຮ່ວງຫຼົ່ນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

**ປະຖະມະວັກ ຈົບ**

## ທຸຕິຍະວັກ

[໑໓໑] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ຖ້າບຸກຄົນເພິ່ງໄດ້ສະຫາຍ ຜູ້ມີປັນຍາຮັກສາຕົນ
ທ່ຽວໄປນຳກັນໄດ້ ເປັນສາທຸວິຫາຣີ ເປັນນັກປາດ
ຄອບງຳອັນຕະລາຍທັງປວງໄດ້ແລ້ວ ເພິ່ງມີໃຈແຊ່ມຊື່ນ
ມີສະຕິ ທ່ຽວໄປກັບສະຫາຍນັ້ນ (໑)

ຄຳວ່າ ຖ້າບຸກຄົນເພິ່ງໄດ້ສະຫາຍ ຜູ້ມີປັນຍາຮັກສາຕົນ ອະທິບາຍວ່າ ຖ້າບຸກຄົນເພິ່ງໄດ້ ຄື ເພິ່ງໄດ້ຮັບ ສົມຫວັງ ປະສົບສະຫາຍຜູ້ມີປັນຍາຮັກສາຕົນ ຄື ຜູ້ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຣູ້ ມີຍານ ມີປັນຍາຊັດແຈ້ງ ມີປັນຍາເຄື່ອງທຳລາຍກິເລດ ລວມຄວາມວ່າ ຖ້າບຸກຄົນເພິ່ງໄດ້ສະຫາຍ ຜູ້ມີປັນຍາຮັກສາຕົນ

ຄຳວ່າ ທ່ຽວໄປນຳກັນໄດ້ ໃນຄຳວ່າ ທ່ຽວໄປນຳກັນໄດ້ ເປັນສາທຸວິຫາຣີ ເປັນນັກປາດ ໄດ້ແກ່ ທ່ຽວໄປຮ່ວມກັນໄດ້

ຄຳວ່າ ເປັນສາທຸວິຫາຣີ ອະທິບາຍວ່າ ຜູ້ພຽບພ້ອມດ້ວຍປະຖົມຊານ ຊື່ວ່າສາທຸວິຫາຣີ ຜູ້ພຽບພ້ອມດ້ວຍທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ຈະຕຸດຖະຊານ ຊື່ວ່າສາທຸວິຫາຣີ

ຜູ້ພຽບພ້ອມດ້ວຍເມດຕາເຈໂຕວິມຸດຕິ ຊື່ວ່າສາທຸວິຫາຣີ ຜູ້ພຽບພ້ອມດ້ວຍ ກະລຸນາເຈໂຕວິມຸດຕິ ຯລຯ ມຸທິຕາເຈໂຕວິມຸດຕິ ຯລຯ ອຸເປກຂາເຈໂຕວິມຸດຕິ ຊື່ວ່າສາທຸວິຫາຣີ ຜູ້ພຽບພ້ອມດ້ວຍອາກາສານັນຈາຍະຕະນະສະມາບັດ ຊື່ວ່າສາທຸວິຫາຣີ ວິນຍານັນຈາຍະຕະນະສະມາບັດ ຯລຯ ອາກິນຈັນຍາຍະຕະນະສະມາບັດ ຯລຯ ເນວະສັນຍານາສັນຍາຍະຕະນະສະມາບັດ ຊື່ວ່າສາທຸວິຫາຣີ ຜູ້ພຽບພ້ອມດ້ວຍນິໂຣທະສະມາບັດ ຊື່ວ່າສາທຸວິຫາຣີ ຜູ້ພຽບພ້ອມດ້ວຍຜົນສະມາບັດ ຊື່ວ່າສາທຸວິຫາຣີ

ຄຳວ່າ ເປັນນັກປາດ ໄດ້ແກ່ ເປັນນັກປາດ ຄື ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຣູ້ ມີຍານ ມີປັນຍາຊັດແຈ້ງ ມີປັນຍາເຄື່ອງທຳລາຍກິເລດ ລວມຄວາມວ່າ ທ່ຽວໄປນຳກັນໄດ້ ເປັນສາທຸວິຫາຣີ ເປັນນັກປາດ

ຄຳວ່າ ຄອບງຳອັນຕະລາຍທັງປວງໄດ້ແລ້ວ ອະທິບາຍວ່າ

ຄຳວ່າ ອັນຕະລາຍ ໄດ້ແກ່ ອັນຕະລາຍ ໒ ຢ່າງ ຄື (໑) ອັນຕະລາຍທີ່ຜາກົດ (໒) ອັນຕະລາຍ ທີ່ບໍ່ຜາກົດ ฯລฯ ເຫຼົ່ານີ້ຮຽກວ່າ ອັນຕະລາຍທີ່ຜາກົດฯລฯ ເຫຼົ່ານີ້ຮຽກວ່າ ອັນຕະລາຍທີ່ບໍ່ຜາກົດ ฯລฯ ທີ່ຊື່ວ່າອັນຕະລາຍ ຍ້ອນເປັນອະກຸສົນທຳທີ່ອາໄສຢູ່ໃນອັດຕະພາບ ເປັນແນວນີ້ແດ່

ຄຳວ່າ ຄອບງຳອັນຕະລາຍທັງປວງໄດ້ແລ້ວ ອະທິບາຍວ່າ ຄອບງຳ ຄື ຂົ່ມຂີ່ ຖ້ວມທັບ ຮັດຄືງ ຍ່ຳຍີອັນຕະລາຍທັງປວງໄດ້ແລ້ວ ລວມຄວາມວ່າ ຄອບງຳອັນຕະລາຍທັງປວງໄດ້ແລ້ວ

ຄຳວ່າ ເພິ່ງມີໃຈແຊ່ມຊື່ນ ມີສະຕິ ທ່ຽວໄປກັບສະຫາຍນັ້ນ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ເພິ່ງມີໃຈແຊ່ມຊື່ນ ຄື ມີໃຈຍິນດີ ຮ່າເຣີງ ເບີກບານ ມີໃຈສູງ ຍິນດີໃຈ ປະພຶດ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປກັບສະຫາຍຜູ້ມີປັນຍາຮັກສາຕົນນັ້ນ ຄື ຜູ້ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຣູ້ ມີຍານ ມີປັນຍາຊັດແຈ້ງ ມີປັນຍາເຄື່ອງທຳລາຍກິເລດ

ຄຳວ່າ ມີສະຕິ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ຍ່ອມມີສະຕິ ຄື ປະກອບດ້ວຍສະຕິອັນເປັນປັນຍາຮັກສາຕົນ ຣະລຶກ ຕາມຣະລຶກເຖິງກຳທີ່ເຮັດ ຄຳທີ່ເວົ້າໄວ້ດົນນານແລ້ວໄດ້ ລວມຄວາມວ່າ ເພິ່ງມີໃຈແຊ່ມຊື່ນ ມີສະຕິ ທ່ຽວໄປກັບສະຫາຍນັ້ນ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ຖ້າບຸກຄົນເພິ່ງໄດ້ສະຫາຍ ຜູ້ມີປັນຍາຮັກສາຕົນ
ທ່ຽວໄປນຳກັນໄດ້ ເປັນສາທຸວິຫາຣີ ເປັນນັກປາດ
ຄອບງຳອັນຕະລາຍທັງປວງໄດ້ແລ້ວ ເພິ່ງມີໃຈແຊ່ມຊື່ນ
ມີສະຕິ ທ່ຽວໄປກັບສະຫາຍນັ້ນ

[໑໓໒] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ຖ້າບຸກຄົນບໍ່ເພິ່ງໄດ້ສະຫາຍ ຜູ້ມີປັນຍາຮັກສາຕົນ
ທ່ຽວໄປນຳກັນໄດ້ ເປັນສາທຸວິຫາຣີ ເປັນນັກປາດ
ກໍເພິ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ
ເໝືອນພຣະຣາຊາຊົງລະຖິ້ມແຄວ້ນທີ່ຊົງຊະນະແລ້ວ
ຊົງປະພຶດຢູ່ພຣະອົງດຽວ ສັນນັ້ນ (໒)

ຄຳວ່າ ຖ້າບຸກຄົນບໍ່ເພິ່ງໄດ້ສະຫາຍຜູ້ມີປັນຍາຮັກສາຕົນ ອະທິບາຍວ່າ ຖ້າບຸກຄົນ ບໍ່ເພິ່ງໄດ້ ຄື ບໍ່ເພິ່ງໄດ້ຮັບ ບໍ່ເພິ່ງສົມຫວັງ ບໍ່ເພິ່ງປະສົບສະຫາຍຜູ້ມີປັນຍາຮັກສາຕົນ ຄື ຜູ້ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຊູ້ ມີຍານ ມີປັນຍາຊັດແຈ້ງ ມີປັນຍາເຄື່ອງທຳລາຍກິເລດ ລວມຄວາມວ່າ ຖ້າບຸກຄົນບໍ່ເພິ່ງໄດ້ສະຫາຍຜູ້ມີປັນຍາ ຮັກສາຕົນ

ຄຳວ່າ ທ່ຽວໄປນຳກັນໄດ້ ໃນຄຳວ່າ ທ່ຽວໄປນຳກັນໄດ້ ເປັນສາທຸວິຫາຣີ ເປັນນັກປາດ ໄດ້ແກ່ ທ່ຽວໄປຮ່ວມກັນໄດ້

ຄຳວ່າ ເປັນສາທຸວິຫາຣີ ອະທິບາຍວ່າ ເປັນຜູ້ພຽບພ້ອມດ້ວຍປະຖົມຊານ ໆລໆ ດ້ວຍນິໂຣທະສະມາບັດ ດ້ວຍຜົນສະມາບັດຊື່ວ່າ ສາທຸວິຫາຣີ

ຄຳວ່າ ເປັນນັກປາດ ໄດ້ແກ່ ເປັນນັກປາດ ຄື ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຊູ້ ມີຍານ ມີປັນຍາຊັດແຈ້ງ ມີປັນຍາເຄື່ອງທຳລາຍກິເລດ ລວມຄວາມວ່າ ທ່ຽວໄປນຳກັນໄດ້ ເປັນສາທຸວິຫາຣີ ເປັນນັກປາດ

ຄຳວ່າ ເໝືອນພຣະຣາຊາ ຊົງລະຖິ້ມແຄວ້ນທີ່ຊົງຊະນະແລ້ວ ຊົງປະພຶດຢູ່ພຣະອົງດຽວດັ່ງນັ້ນ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້າຕັດຄວາມກັງວົນໃນການຄອງເຮືອນໄດ້ທັງໝົດ ຄວາມກັງວົນດ້ວຍບຸດແລະພັນລະຍາ ຄວາມກັງວົນດ້ວຍຍາດພີ່ນ້ອງ ຄວາມກັງວົນດ້ວຍມິດ ແລະອຳນາດແລ້ວ ແຖຜົມແລະໜວດ ຄອງຜ້າກາສະວະ ອອກຈາກເຮືອນບວດ ເປັນບັນພະຊິດ ເຂົ້າເຖິງຄວາມເປັນຜູ້ບໍ່ມີຄວາມກັງວົນແລ້ວ ປະພຶດຢູ່ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປອົງດຽວ ເໝືອນກະສັດ ຜູ້ໄດ້ຮັບມຸນທາພິເສກເປັນພຣະຣາຊາ ຊະນະສົງຄາມ ກຳຣາບປັດຈາມິດ ໄດ້ຮັບອະທິປະໄຕຍ ມີພຣະຄັງ ບໍລິບູນແລ້ວ ຊົງສະລະແຄວ້ນ ຊົນນະບົດ ກອງພົນຣົບ ຄັງຫຼວງ ແລະພຣະນະຄອນທີ່ມີເງິນຄຳທັງຫຼາຍ ຊົງປົງພຣະເກສາແລະພຣະມັດສຸແລ້ວ ຊົງຄອງຜ້າກາສະວະ ສະເດັດ ອອກບວດຈາກພຣະຣາດຊະວັງເປັນບັນພະຊິດ ຊົງເຂົ້າເຖິງຄວາມເປັນຜູ້ບໍ່ມີຄວາມກັງວົນ ຊົງປະພຶດຢູ່ ຄື ປະທັບຢູ່ ຊົງປ່ຽນອິລິຍາບົດ ຊົງເປັນໄປ ຊົງຮັກສາພຣະຊົນຊີບ ຊົງດຳເນີນໄປ ຊົງຍັງຊີວິດໃຫ້ດຳເນີນໄປລຳພັງພຣະອົງດຽວ ດັ່ງນັ້ນ ລວມຄວາມວ່າ ເໝືອນພຣະຣາຊາຊົງລະຖິ້ມແຄວ້ນ ທີ່ຊົງຊະນະແລ້ວ ຊົງປະພຶດຢູ່ພຣະອົງດຽວ ດັ່ງນັ້ນ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້າຈຶ່ງກ່າວວ່າ

ຖ້າບຸກຄົນບໍ່ເພິ່ງໄດ້ສະຫາຍ ຜູ້ມີປັນຍາຮັກສາຕົນ
ທ່ຽວໄປນຳກັນໄດ້ ເປັນສາທຸວິຫາຣີ ເປັນນັກປາດ
ກໍເພິ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ
ເໝືອນພຣະຣາຊາຊົງລະຖິ້ມແຄວ້ນທີ່ຊົງຊະນະແລ້ວ
ຊົງປະພຶດຢູ່ຜູ້ດຽວ ສັນນັ້ນ

[໑໓໓] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ເຮົາສັນເສີນສະຫາຍສຳປະທາໂດຍແທ້
ບຸກຄົນຄວນຄົບສະຫາຍຜູ້ປະເສີດສຸດ (ຫຼື) ຜູ້ສະເໝີກັນ
ຖ້າບຸກຄົນບໍ່ໄດ້ສະຫາຍເຫຼົ່ານີ້
ເພິ່ງເປັນຜູ້ບໍຣິໂພກປັດໄຈອັນບໍ່ມີໂທດ
ປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໓)

ຄຳວ່າ ໂດຍແທ້ ໃນຄຳວ່າ ເຮົາສັນເສີນສະຫາຍສຳປະທາໂດຍແທ້ ນີ້ເປັນຄຳກ່າວໄນດຽວ ເປັນຄຳກ່າວໂດຍບໍ່ສົງໄສ ເປັນຄຳກ່າວໂດຍບໍ່ເຄືອບແຄງ ເປັນຄຳກ່າວໂດຍບໍ່ເປັນ ໒ ໄນ ເປັນຄຳກ່າວໂດຍບໍ່ເປັນ ໒ ຢ່າງ ເປັນຄຳກ່າວໂດຍຮັດກຸມ ເປັນຄຳກ່າວໂດຍບໍ່ຜິດ ຄຳວ່າ ໂດຍແທ້ນີ້ ເປັນຄຳກ່າວທີ່ກຳນົດໄວ້ແນ່ແລ້ວ

ຄຳວ່າ ສະຫາຍສຳປະທາ ອະທິບາຍວ່າ ສະຫາຍຜູ້ພຽບພ້ອມດ້ວຍສີນຂັນອັນເປັນອະເສຂະ ດ້ວຍສະມາທິຂັນອັນເປັນອະເສຂະ ໆລໆ ດ້ວຍປັນຍາຂັນອັນເປັນອະເສຂະໆລໆ ດ້ວຍວິມຸດຕິຂັນອັນເປັນອະເສຂະ ໆລໆ ດ້ວຍວິມຸດຕິຍານະທັດສະນະຂັນອັນເປັນອະເສຂະ ຮຽກວ່າ ສະຫາຍສຳປະທາ

ຄຳວ່າ ເຮົາສັນເສີນສະຫາຍສຳປະທາໂດຍແທ້ ອະທິບາຍວ່າ ເຮົາສັນເສີນ ຄື ຊົມເຊີຍຍ້ອງຍໍ ພັນລະນາຄຸນສະຫາຍສຳປະທາ ລວມຄວາມວ່າ ເຮົາສັນເສີນສະຫາຍສຳປະທາ ໂດຍແທ້

ຄຳວ່າ ບຸກຄົນຄວນຄົບສະຫາຍຜູ້ປະເສີດສຸດ (ຫຼື) ຜູ້ສະເໝີກັນ ອະທິບາຍວ່າ ສະຫາຍຜູ້ປະເສີດດ້ວຍສີນ ສະມາທິ ປັນຍາ ວິມຸດຕິ ວິມຸດຕິຍານະທັດສະນະ ສະຫາຍຜູ້ສະເໝີກັນ ຄືຜູ້ເຊັ່ນດຽວກັນ ຈຶ່ງຄວນຄົບຫາ ຄື ຄວນຄົບ ຄວນນັ່ງໃກ້ ຄວນໄຕ່ຖາມ ຄວນສອບຖາມ ລວມຄວາມວ່າ ບຸກຄົນຄວນຄົບສະຫາຍຜູ້ປະເສີດສຸດ (ຫຼື) ຜູ້ສະເໝີກັນ

## ວ່າດ້ວຍບຸກຄົນຜູ້ບໍຣິໂພກປັດໄຈທີ່ມີໂທດແລະບໍ່ມີໂທດ

ຄຳວ່າ ຖ້າບຸກຄົນບໍ່ໄດ້ສະຫາຍເຫຼົ່ານີ້ ເພິ່ງເປັນຜູ້ບໍຣິໂພກປັດໄຈອັນບໍ່ມີໂທດແລ້ວ ອະທິບາຍວ່າ ບຸກຄົນຜູ້ບໍຣິໂພກປັດໄຈອັນມີໂທດກໍມີ ຜູ້ບໍຣິໂພກປັດໄຈອັນບໍ່ມີໂທດກໍມີ

ບຸກຄົນຜູ້ບໍຣິໂພກປັດໄຈອັນມີໂທດ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ໄດ້ແລ້ວ ໄດ້ຮັບແລ້ວ ໄດ້ສະເພາະແລ້ວ ສົມຫວັງແລ້ວ ປະສົບແລ້ວເຊິ່ງປັດໄຈ ລ້ຽງຊີບດ້ວຍການເວົ້າຕົວະ ດ້ວຍການເວົ້າລຽບຄຽງ ດ້ວຍການທຳນິມິດ ດ້ວຍການກຳຈັດຄຸນເຂົາ ດ້ວຍການຕໍ່ລາບດ້ວຍລາບ ດ້ວຍການໃຫ້ໄມ້ ດ້ວຍການໃຫ້ໄມ້ໄຜ່

ດ້ວຍການໃຫ້ໃບໄມ້ ດ້ວຍການໃຫ້ດອກໄມ້ ດ້ວຍການໃຫ້ໝາກໄມ້ ດ້ວຍການໃຫ້ນໍ້າອາບ ດ້ວຍການໃຫ້ແປ້ງ ດ້ວຍການໃຫ້ດິນສໍພອງ ດ້ວຍການໃຫ້ໄມ້ສີແຂ້ວ ດ້ວຍການໃຫ້ນໍ້າບ້ວນປາກ ດ້ວຍຄໍາເວົ້າມຸ້ງໃຫ້ເຂົາຮູ້ຈັກຕົນ ດ້ວຍຄໍາເວົ້າເຫຼາະແຫຼະເໝືອນແກງຖົ່ວ ດ້ວຍກິຣິຍາ ປະຈົບ ດ້ວຍການຂັດຕັ່ງຕີສະນິດເຂົາ ດ້ວຍວິຊາເບິ່ງພື້ນທີ່ ດ້ວຍເດຍຣັດສານວິຊາ ດ້ວຍວິຊາທໍານາຍລັກສະນະອະໄວຍະວະ ດ້ວຍວິຊາເບິ່ງເລີກຍາມ ດ້ວຍການຍ່າງເຮັດໜ້າທີ່ທູດ ດ້ວຍການຍ່າງເປັນຄົນຮັບໃຊ້ ດ້ວຍການຍ່າງສື່ສານ ດ້ວຍເວດຊະກໍາ ດ້ວຍນະວະກໍາ ດ້ວຍການໃຊ້ກ້ອນເຂົ້າຕອບແທນ ກ້ອນເຂົ້າ ດ້ວຍການໃຫ້ແລະການເພີ່ມໃຫ້ ໂດຍບໍ່ຊອບທໍາ ບໍ່ຍຸດຕິທໍາ ນີ້ຮຽກວ່າບຸກຄົນຜູ້ບໍຣິໂພກປັດໄຈອັນມີໂທດ

ບຸກຄົນຜູ້ບໍຣິໂພກປັດໄຈອັນບໍ່ມີໂທດ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ໄດ້ແລ້ວ ໄດ້ຮັບແລ້ວ ໄດ້ສະເພາະແລ້ວ ສົມຫວັງແລ້ວ ປະສົບແລ້ວເຊິ່ງປັດໄຈ ລ້ຽງຊີບໂດຍຊອບທໍາ ໂດຍຍຸດຕິທໍາ ບໍ່ແມ່ນດ້ວຍການເວົ້າຕົວະ ບໍ່ແມ່ນດ້ວຍການເວົ້າລຽບຄຽງ ບໍ່ແມ່ນດ້ວຍການທໍານິມິດ ບໍ່ແມ່ນດ້ວຍການກໍາຈັດຄຸນເຂົາ ບໍ່ແມ່ນດ້ວຍການຕໍ່ລາບດ້ວຍລາບ ບໍ່ແມ່ນດ້ວຍການໃຫ້ໄມ້ ບໍ່ແມ່ນດ້ວຍການໃຫ້ໄມ້ໄຜ່ ບໍ່ແມ່ນດ້ວຍການໃຫ້ໃບໄມ້ ບໍ່ແມ່ນດ້ວຍການໃຫ້ດອກໄມ້ ບໍ່ແມ່ນດ້ວຍການໃຫ້ໝາກໄມ້ ບໍ່ແມ່ນດ້ວຍການໃຫ້ນໍ້າອາບ ບໍ່ແມ່ນດ້ວຍການໃຫ້ແປ້ງຫອມ ບໍ່ແມ່ນດ້ວຍການໃຫ້ດິນສໍພອງ ບໍ່ແມ່ນດ້ວຍການໃຫ້ໄມ້ສີແຂ້ວ ບໍ່ແມ່ນດ້ວຍການໃຫ້ນໍ້າ ບ້ວນປາກ ບໍ່ແມ່ນດ້ວຍຄໍາເວົ້າມຸ້ງໃຫ້ເຂົາຮູ້ຈັກຕົນ ບໍ່ແມ່ນດ້ວຍຄໍາເວົ້າເຫຼາະແຫຼະເໝືອນແກງຖົ່ວ ບໍ່ແມ່ນດ້ວຍກິຣິຍາປະຈົບ ບໍ່ແມ່ນດ້ວຍການຂັດຕັ່ງຕີສະນິດເຂົາ ບໍ່ແມ່ນດ້ວຍວິຊາເບິ່ງພື້ນທີ່ ບໍ່ແມ່ນດ້ວຍເດຍຣັດສານວິຊາ ບໍ່ແມ່ນດ້ວຍວິຊາທໍານາຍລັກສະນະອະໄວຍະວະ ບໍ່ແມ່ນດ້ວຍວິຊາເບິ່ງເລີກຍາມ ບໍ່ແມ່ນດ້ວຍການຍ່າງເຮັດໜ້າທີ່ທູດ ບໍ່ແມ່ນດ້ວຍການຍ່າງເປັນຄົນຮັບໃຊ້ ບໍ່ແມ່ນດ້ວຍການຍ່າງສື່ສານ ບໍ່ແມ່ນດ້ວຍເວດຊະກໍາ ບໍ່ແມ່ນດ້ວຍນະວະກໍາ ບໍ່ແມ່ນດ້ວຍການໃຊ້ກ້ອນເຂົ້າຕອບແທນກ້ອນເຂົ້າ ບໍ່ແມ່ນດ້ວຍການໃຫ້ແລະການເພີ່ມໃຫ້ ນີ້ຮຽກວ່າ ບຸກຄົນຜູ້ບໍຣິໂພກປັດໄຈອັນບໍ່ມີໂທດ

ຄໍາວ່າ ຖ້າບຸກຄົນບໍ່ໄດ້ສະຫາຍເຫຼົ່ານີ້ ເພິ່ງບໍຣິໂພກປັດໄຈອັນບໍ່ມີໂທດ ອະທິບາຍວ່າບຸກຄົນບໍ່ໄດ້ແລ້ວ ຄື ບໍ່ໄດ້ຮັບແລ້ວ ບໍ່ໄດ້ສົມຫວັງແລ້ວ ບໍ່ໄດ້ປະສົບແລ້ວ ບໍ່ໄດ້ສະເພາະແລ້ວເຊິ່ງສະຫາຍເຫຼົ່ານີ້ ເພິ່ງເປັນຜູ້ບໍຣິໂພກປັດໄຈອັນບໍ່ມີໂທດເທີ້ນ ລວມຄວາມວ່າ ຖ້າບຸກຄົນບໍ່ໄດ້ສະຫາຍເຫຼົ່ານີ້ ເພິ່ງບໍຣິໂພກປັດໄຈອັນບໍ່ມີໂທດ ປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນພຣະປັດເຈກສໍາພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ເຮົາສັນເສີນສະຫາຍສໍາປະທາໂດຍແທ້
ບຸກຄົນຄວນຄົບສະຫາຍຜູ້ປະເສີດສຸດ (ຫຼື) ຜູ້ສະເໝີກັນ
ຖ້າບຸກຄົນບໍ່ໄດ້ສະຫາຍເຫຼົ່ານີ້

ເພິ່ງເປັນຜູ້ບໍຣິໂພກປັດໄຈອັນບໍ່ມີໂທດ
ປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໑໔] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ບຸກຄົນເຫັນກ່ອງແຂນຄຳ ໔ ວົງ ອັນສຸກໃສ
ທີ່ຊ່າງຄຳເຮັດສຳເລັດຢ່າງດີ ກະທົບກັນຢູ່ທີ່ແຂນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໔)

ຄຳວ່າ ບຸກຄົນເຫັນກ່ອງແຂນຄຳ ໆລໆ ອັນສຸກໃສ ອະທິບາຍວ່າ ບຸກຄົນເຫັນ ຄື ແນມເຫັນ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວ

ຄຳວ່າ ຄຳ ໄດ້ແກ່ ຄຳ

ຄຳວ່າ ອັນສຸກໃສ ໄດ້ແກ່ ບໍລິສຸດ ສະອາດ ສົດໃສ ລວມຄວາມວ່າ ບຸກຄົນເຫັນກ່ອງແຂນຄຳ ໆລໆ ອັນສຸກໃສ

ຄຳວ່າ ທີ່ຊ່າງຄຳເຮັດສຳເລັດຢ່າງດີ ອະທິບາຍວ່າ ຄົນເຮັດຄຳ ຮຽກວ່າ ຊ່າງຄຳ

ຄຳວ່າ ທີ່ຊ່າງຄຳເຮັດສຳເລັດຢ່າງດີ ອະທິບາຍວ່າ ທີ່ຊ່າງຄຳເຮັດສຳເລັດແລ້ວຢ່າງດີ ຄື ທີ່ເຮັດແລ້ວຢ່າງດີ ທີ່ຂັດເງົາດີແລ້ວ ລວມຄວາມວ່າ ທີ່ຊ່າງຄຳເຮັດສຳເລັດຢ່າງດີ

ຄຳວ່າ ໔ ວົງ ໆລໆ ກະທົບກັນຢູ່ທີ່ຂໍ້ແຂນ ອະທິບາຍວ່າ ມີຮຽກວ່າ ຂໍ້ແຂນ ກຳໄລ ໔ ວົງ ຍ່ອມກະທົບກັນຢູ່ທີ່ມີຂ້າງໜຶ່ງ ສັນໃດ ສັດທັງຫຼາຍກໍສັນນັ້ນ ຍ່ອມກະທົບກະທັ່ງກັນດ້ວຍອຳນາດຕັນຫາ ດ້ວຍອຳນາດທິດຖິ ບຽດສຽດໃນນະຮົກ ກຳເນີດເດຍຣັດສານ ເຜດວິໄສ ມະນຸດໂລກ ເທວະໂລກ ຄື ສືບຕໍ່ ສືບສານຄະຕິດ້ວຍຄະຕິ ອຸປະບັດ ດ້ວຍອຸປະບັດ ປະຕິສົນທິດ້ວຍປະຕິສົນທິ ພົບດ້ວຍພົບ ສົງສານດ້ວຍສົງສານ ວັດຕະດ້ວຍວັດຕະ ເມື່ອສືບສານ ກໍຍ່ອມປະພຶດ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ລວມຄວາມວ່າ ໔ ວົງ ໆລໆ ກະທົບກັນຢູ່ທີ່ຂໍ້ແຂນ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້າຈຶ່ງກ່າວວ່າ

ບຸກຄົນເຫັນກ່ອງແຂນຄຳ ໔ ວົງ ອັນສຸກໃສ
ທີ່ຊ່າງຄຳເຮັດສຳເລັດຢ່າງດີ ກະທົບກັນຢູ່ທີ່ຂໍ້ແຂນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໑໕] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ດ້ວຍອາການແບບນີ້ ການກ່າວວາຈາ
ຫຼືຄວາມກ່ຽວຂ້ອງກັບເພື່ອນ ເພິ່ງມີແກ່ເຮົາ

ເຮົາເມື່ອເພ່ງເຫັນໄພນີ້ຕໍ່ໄປ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໕)

ຄຳວ່າ ດ້ວຍອາການແບບນີ້ ຯລຯ ກັບເພື່ອນ ເພິ່ງມີແກ່ເຮົາ ອະທິບາຍວ່າ ຕັນຫາເປັນເພື່ອນກໍມີ ບຸກຄົນເປັນເພື່ອນກໍມີ

ຕັນຫາເປັນເພື່ອນ ເປັນແນວໃດ?

ຄຳວ່າ ຕັນຫາ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ ຜູ້ໃດຍັງລະຕັນຫານີ້ບໍ່ໄດ້ ຜູ້ນັ້ນຮຽກວ່າ ຜູ້ມີຕັນຫາເປັນເພື່ອນ

(ສົມຈິງດັ່ງຄາຖາປະພັນວ່າ)

ບຸຣຸດມີຕັນຫາເປັນເພື່ອນ
ທ່ອງທ່ຽວໄປຕະຫຼອດການລະນານ
ຍ່ອມບໍ່ລ່ວງພົ້ນສັງສາຣະວັດ
ທີ່ມີຄວາມເປັນແນວນີ້ແລະຄວາມເປັນຢ່າງອື່ນ
ຕັນຫາເປັນເພື່ອນ ເປັນແນວນີ້

ບຸກຄົນເປັນເພື່ອນ ເປັນແນວໃດ?

ຄື ຄົນບາງຄົນໃນໂລກນີ້ ຟຸ້ງຊ່ານ ມີຈິດບໍ່ສະຫງົບ ບໍ່ແມ່ນຍ້ອນເຫດທີ່ເປັນປະໂຫຍດ ບໍ່ແມ່ນຍ້ອນມີເຫດການ ເປັນບຸກຄົນທີ ໒ ຂອງຄົນຜູ້ດຽວ ເປັນທີ ໓ ຂອງບຸກຄົນ ໒ ຄົນ ຫຼືເປັນທີ ໔ ຂອງບຸກຄົນ ໓ ຄົນ ເວົ້າເລື້ອງເພີ້ເຈີ້ທັງຫຼາຍໃນບ່ອນນັ້ນ ຄື ເວົ້າເລື້ອງ ພຣະຣາຊາ ເລື້ອງໂຈນ ເລື້ອງມະຫາອຳມາດ ເລື້ອງກອງທັບ ເລື້ອງໄພ ເລື້ອງການຮົບ ເລື້ອງເຂົ້າ ເລື້ອງນ້ຳ ເລື້ອງຜ້າ ເລື້ອງບ່ອນນອນ ເລື້ອງລະບຽບດອກໄມ້ ເລື້ອງຂອງຫອມ ເລື້ອງຍາດພີ່ນ້ອງ ເລື້ອງຍານ ເລື້ອງບ້ານເຮືອນ ເລື້ອງນິຄົມ ເລື້ອງເມືອງ ເລື້ອງຊົນນະບົດ ເລື້ອງສະຕີ ເລື້ອງບຸຣຸດ ເລື້ອງຄົນກ້າຫານ ເລື້ອງຮ່ອມ ເລື້ອງທ່ານ້ຳ ເລື້ອງຄົນທີ່ລ່ວງລັບໄປແລ້ວ ເລື້ອງຕ່າງ ໆ ເລື້ອງໂລກ ເລື້ອງທະເລ ເລື້ອງຄວາມຈະເລີນ ແລະຄວາມເສື່ອມ ແນວນັ້ນແນວນີ້ ບຸກຄົນເປັນເພື່ອນທີສອງ ເປັນແນວນີ້ ລວມຄວາມວ່າ ດ້ວຍອາການແນວນີ້ ຯລຯ ກັບເພື່ອນເພິ່ງມີແກ່ເຮົາ

ຄຳວ່າ ການກ່າວວາຈາ ຫຼື ຄວາມກ່ຽວຂ້ອງກັບເພື່ອນ ອະທິບາຍວ່າ ເດຣັດສານກະຖາ ໓໒ ຮຽກວ່າ ການກ່າວວາຈາ ຄື ເລື້ອງພຣະຣາຊາ ເລື້ອງໂຈນ ຯລຯ ເລື້ອງຄວາມຈະເລີນ ແລະຄວາມເສື່ອມແນວນັ້ນແນວນີ້

ຄຳວ່າ ຄວາມກ່ຽວຂ້ອງ ໄດ້ແກ່ ຄວາມກ່ຽວຂ້ອງ ໒ ຢ່າງ ຄື (໑) ຄວາມກ່ຽວຂ້ອງດ້ວຍອຳນາດຕັນຫາ (໒) ຄວາມກ່ຽວຂ້ອງດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າ ຄວາມກ່ຽວຂ້ອງດ້ວຍ

ອຳນາດຕັນຫາ ໗ລ໗ ນີ້ຊື່ວ່າ ຄວາມກ່ຽວຂ້ອງດ້ວຍອຳນາດທິດຖິ ລວມຄວາມວ່າ ການກ່າວວາຈາ ຫຼື ຄວາມກ່ຽວຂ້ອງກັບເພື່ອນ

ຄຳວ່າ ເຮົາເມື່ອເພ່ງເຫັນໄພນີ້ຕໍ່ໄປ ໄດ້ແກ່ ຊາດໄພ ຊະຣາໄພ ພະຍາທິໄພ ມໍຣະນະໄພ ຣາດຊະໄພ ໂຈຣະໄພ ອັກຄີໄພ ອຸທະກະໄພ ອັດຕານຸວາທະໄພ ປະຣະນຸວາທະໄພ ທັນດະໄພ ທຸກຄະຕິໄພ ອູມີໄພ ກຸມພີລະໄພ ອາວັດຕະໄພ ສຸງສຸມາຣະໄພ ອາຊີວິກະໄພ ອະສິໂລກະໄພ ປະຣິສະສາຣັດຊະໄພ ມະທະນະໄພ ເຫດທີ່ເປັນຕາຢ້ານ ຄວາມຫວາດສຽວ ຂົນພອງສະຫຍອງເກົ້າ ໃຈຫວາດສຽວ ຄວາມສະດຸ້ງ

ຄຳວ່າ ເຮົາເມື່ອເພ່ງເຫັນໄພນີ້ຕໍ່ໄປ ອະທິບາຍວ່າ ບຸກຄົນເມື່ອເພ່ງເຫັນ ຄື ແນມເຫັນ ແນມເບິ່ງ ເພ່ງພິນິດ ພິຈາລະນາເຫັນໄພນີ້ຕໍ່ໄປ ລວມຄວາມວ່າ ເຮົາເມື່ອເພ່ງເຫັນໄພນີ້ຕໍ່ໄປ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ດ້ວຍອາການແນວນີ້ ການກ່າວວາຈາ
ຫຼືຄວາມກ່ຽວຂ້ອງກັບເພື່ອນ ເພິ່ງມີແກ່ເຮົາ
ເຮົາເມື່ອເພ່ງເຫັນໄພນີ້ຕໍ່ໄປ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໓໖] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ຍ້ອນການທັງຫຼາຍສວຍງາມ
ມີຣົດແຊບ ໜ້າຣື່ນເຣິງໃຈ
ຍົ່ວຍຸຈິດດ້ວຍອາລົມຫຼາຍຮູບແບບ
ເຮົາເຫັນໂທດໃນການມະຄຸນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໖)

ຄຳວ່າ ການ ໃນຄຳວ່າ ຍ້ອນການທັງຫຼາຍສວຍງາມ ມີຣົດແຊບ ໜ້າຣື່ນເຣິງໃຈ ໄດ້ແກ່ ການ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸການ (໒) ກິເລດການ໗ລ໗ ເຫຼົ່ານີ້ ຮຽກວ່າ ວັດຖຸການ ໗ລ໗ ເຫຼົ່ານີ້ຮຽກວ່າ ກິເລດການ

ຄຳວ່າ ສວຍງາມ ອະທິບາຍວ່າ ມີຮູບຊະນິດຕ່າງ ໆ ມີສຽງຊະນິດຕ່າງ ໆ ມີກິ່ນຊະນິດຕ່າງ ໆ ມີຣົດຊະນິດຕ່າງ ໆ ມີໂຜດຖັບພະຊະນິດຕ່າງ ໆ ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ຄຳວ່າ ມີຣົດແຊບ ອະທິບາຍວ່າ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ການມະຄຸນມີ ໕ ຢ່າງເຫຼົ່ານີ້ ໕ ຢ່າງອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງ ໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
໒. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ
໓. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ
໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ
໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ພິກຂຸທັງຫຼາຍ ກາມມະຄຸນ ໕ ຢ່າງນີ້ແລ ພິກຂຸທັງຫຼາຍ ສຸກ ໂສມະນັດ ອັນໃດ ອາໄສ ກາມມະຄຸນ ໕ ນັ້ນເກີດຂຶ້ນ ໂສມະນັດນີ້ ຮຽກວ່າ ກາມມະຄຸນອັນເປັນສຸກທີ່ເກີດແຕ່ການມີເພດ ສຳພັນ ສຸກຂອງປຸຖຸຊົນ ບໍ່ແມ່ນສຸກຂອງພຣະອະຣິຍະ ເຮົາກ່າວວ່າ ບໍ່ຄວນເສບ ບໍ່ຄວນຄົບຫາ ບໍ່ຄວນໃຫ້ຈະເລີນ ບໍ່ຄວນເຮັດໃຫ້ຫຼາຍ ຄວນເກງກົວສຸກຊະນິດນີ້ ລວມຄວາມວ່າ ຍ້ອນກາມທັງ ຫຼາຍສວຍງາມ ມີຣົດແຊບ

ຄຳວ່າ ໜ້າຣື່ນເຣິງໃຈ ອະທິບາຍວ່າ

ຄຳວ່າ ໃຈ ໄດ້ແກ່ ຈິດ ມະໂນ ມານັດ ຫົວໃຈ ປັນທະຣະມະນະ ມະນາຍະຕະນະ ມະ ນິນຊີ ວິນຍານ ວິນຍານຂັນ ມະໂນວິນຍານທາດທີ່ເກີດຈາກວິນຍານຂັນນັ້ນ ກາມຍ່ອມລໍ້ໃຈໃຫ້ ຍິນດີ ຊື່ນຊົມ ພໍໃຈ ຣື່ນເຣິງ ລວມຄວາມວ່າ ຍ້ອນກາມທັງຫຼາຍສວຍງາມ ມີຣົດແຊບ ໜ້າຣື່ນ ເຣິງໃຈ

ຄຳວ່າ ຍົ່ວຍຸຈິດດ້ວຍອາລົມຫຼາຍຮູບແບບ ອະທິບາຍວ່າ ຍ່ອມຍົ່ວຍຸ ຄື ລໍ້ໃຫ້ຈິດພໍໃຈ ໃຫ້ຮ່າເຣິງ ໃຫ້ຣື່ນເຣິງ ດ້ວຍຮູບຊະນິດຕ່າງ ໆ ຯລຯ ໂຜດຖັບພະຊະນິດຕ່າງ ໆ ລວມຄວາມ ວ່າ ຍົ່ວຍຸຈິດດ້ວຍອາລົມຫຼາຍຮູບແບບ

## ວ່າດ້ວຍໂທດແຫ່ງກາມມະຄຸນ

ຄຳວ່າ ເຮົາເຫັນໂທດໃນກາມມະຄຸນແລ້ວ ອະທິບາຍວ່າ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກ ເຈົ້າໄດ້ຕັດໄວ້ວ່າ ພິກຂຸທັງຫຼາຍ ໂທດແຫ່ງກາມ ເປັນແນວໃດ ກຸນລະບຸດໃນໂລກນີ້ລ້ຽງຊີວິດ ດ້ວຍການມີສິນລະປະໃດ ຄື ດ້ວຍການນັບຄະແນນ ການຄິດໄລ່ ການນັບຈຳນວນ ການໄຖ ການຄ້າຂາຍ ການລ້ຽງງົວ ການຍິງທະນູ ການຮັບຣາດຊະການ ຫຼື ດ້ວຍສິນລະປະແນວໃດ ແນວໜຶ່ງ ອົດທົນຕໍ່ຄວາມໜາວ ຕາກຕຳຕໍ່ຄວາມຮ້ອນ ຢ້ານກົວແຕ່ສຳຜັດແຫ່ງ ເຫຼືອດ ຍຸງ ລົມ ແດດ ແລະສັດເລືອຄານ ແລະຕາຍລົງດ້ວຍຄວາມຫິວກະຫາຍ ແມ່ນຂໍ້ນີ້ ກໍຊື່ວ່າເປັນໂທດແຫ່ງ ກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນເຄົ້າ ມີກາມເປັນ ເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ຖ້າເມື່ອກຸນລະບຸດນັ້ນດຸໝັ່ນ ພາກພຽນ ພະຍາຍາມຢູ່ແບບນີ້ ໂພຄະສົມບັດເຫຼົ່ານັ້ນຍ່ອມບໍ່ສຳລິດຜົນ ເຂົາເສົ້າໂສກ ລຳບາກ ລຳພັນ ຕີເອິກພ່ຳເພີ້ ເຖິງຄວາມຫຼົງໃຫຼວ່າ ຄວາມດຸໝັ່ນຂອງເຮົາເປັນໂມຄະນໍ ຄວາມພະຍາຍາມຂອງເຮົາບໍ່ມີຜົນເລີຍ ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຄົ້າ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ຖ້າເມື່ອກຸນລະບຸດນັ້ນດຸໝັ່ນ ພາກພຽນ ພະຍາຍາມຢູ່ແບບນີ້ ໂພຄະສົມບັດເຫຼົ່ານັ້ນຍ່ອມສຳເລັດຜົນ ແຕ່ຕ້ອງສະເຫວີຍທຸກໂທມະນັດ ມີເຫດມາຈາກການຮັກສາໂພຄະສົມບັດເຫຼົ່ານັ້ນ ວ່າ ເຮັດແນວໃດ ພຣະຣາຊາທັງຫຼາຍ ຈະບໍ່ເພິ່ງຢຶດໂພຄະສົມບັດທັງຫຼາຍຂອງເຮົາ ພວກໂຈນຈະບໍ່ເພິ່ງລັກໄປ ໄຟຈະບໍ່ເພິ່ງໄໝ້ ນ້ຳຈະບໍ່ເພິ່ງພັດໄປ ທາຍາດຜູ້ບໍ່ເປັນທີ່ຮັກຈະບໍ່ເພິ່ງແຍ່ງຊີງໄປ ເມື່ອກຸນລະບຸດນັ້ນຮັກສາ ຄຸ້ມຄອງຢູ່ແບບນີ້ ຖືກພຣະຣາຊາທັງຫຼາຍຢຶດໂພຄະສົມບັດນັ້ນໄປກໍດີ ພວກໂຈນປຸ້ນເອົາໄປກໍດີ ໄຟໄໝ້ສາກໍດີ ນ້ຳພັດໄປກໍດີ ທາຍາດຜູ້ບໍ່ເປັນທີ່ຮັກແຍ່ງເອົາໄປກໍດີ ເຂົາເສົ້າໂສກ ຯລຯ ເຖິງຄວາມຫຼົງໃຫຼວ່າ ສິ່ງໃດເຄີຍເປັນຂອງເຮົາ ແມ່ນສິ່ງນັ້ນ ກໍບໍ່ເປັນຂອງເຮົາແລ້ວ ພິກຂຸທັງຫຼາຍ ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຄົ້າ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ອີກໄນໜຶ່ງ (ໂທດແຫ່ງກາມທັງຫຼາຍ) ມີກາມເປັນເຫດ ມີກາມເປັນຕົ້ນເຄົ້າ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນເອງ ພວກພຣະຣາຊາຊົງວິວາດກັບ ພວກພຣະຣາຊາກໍໄດ້ ພວກກະສັດວິວາດກັບພວກກະສັດກໍໄດ້ ພວກພາມວິວາດກັບພວກພາມກໍໄດ້ ພວກຄະຫະບໍດີວິວາດກັບພວກຄະຫະບໍດີກໍໄດ້ ມານດາວິວາດກັບບຸດກໍໄດ້ ບຸດວິວາດກັບມານດາກໍໄດ້ ບິດາວິວາດກັບບຸດກໍໄດ້ ບຸດວິວາດກັບບິດາກໍໄດ້ ອ້າຍນ້ອງຊາຍວິວາດກັບເອື້ອຍນ້ອງສາວກໍໄດ້ ເອື້ອຍນ້ອງສາວວິວາດກັບອ້າຍນ້ອງຊາຍກໍໄດ້ ສະຫາຍ ວິວາດກັບສະຫາຍກໍໄດ້ ຊົນເຫຼົ່ານັ້ນເຖິງການຜິດຖຽງ ແກ່ງແຍ່ງແລະວິວາດກັນໃນບ່ອນນັ້ນ ທຳຮ້າຍກັນແລະກັນດ້ວຍຝາມືແດ່ ດ້ວຍກ້ອນດິນແດ່ ດ້ວຍທ່ອນໄມ້ແດ່ ດ້ວຍອາວຸດແດ່ ເຖິງຄວາມຕາຍໃນບ່ອນນັ້ນແດ່ ໄດ້ຮັບທຸກປາງຕາຍແດ່ ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຄົ້າ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ອີກໄນໜຶ່ງ (ໂທດແຫ່ງກາມທັງຫຼາຍ) ມີກາມເປັນເຫດ ມີກາມເປັນຕົ້ນເຄົ້າ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍ ຊົນທັງຫຼາຍຖືດາບແລະໂລ່ ຈັບທະນູແບກລູກສອນແລ້ວ ແລ່ນເຂົ້າສູ່ສົງຄາມປະທະກັນທັງ ໒ ຝ່າຍ ເມື່ອພວກເຂົາຍິງລູກສອນໄປແດ່ ພຸ່ງຫອກໄປແດ່ ກວັດແກວ່ງດາບຟັນແດ່ ຊົນເຫຼົ່ານັ້ນຖືກລູກສອນສຽບເອົາແດ່ ຖືກຫອກແທງແດ່ ຖືກດາບຕັດຫົວ ພວກເຂົາຕາຍໃນບ່ອນນັ້ນແດ່ ໄດ້ຮັບທຸກປາງຕາຍແດ່ ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງ

ກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມ ເປັນຕົ້ນເຄົ້າ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ອີກໄນໜຶ່ງ (ໂທດແຫ່ງກາມທັງຫຼາຍ) ມີກາມເປັນເຫດ ມີກາມເປັນຕົ້ນເຄົ້າ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍ ຊົນທັງຫຼາຍຖືດາບແລະໂລ່ ຈັບທະນູພາດລູກສອນແລ້ວ ແລ່ນເຂົ້າສູ່ຕຶກກຳແພງທີ່ສາບດ້ວຍຕົມຮ້ອນ ເມື່ອພວກເຂົາຍິງລູກສອນໄປແດ່ ພຸ່ງຫອກໄປແດ່ ກວັດແກວ່ງດາບຟັນກັນແດ່ ຊົນເຫຼົ່ານັ້ນຖືກລູກສອນສຽບເອົາແດ່ ຖືກຫອກແທງແດ່ ຖືກຫົດດ້ວຍຂີ້ງົວຮ້ອນແດ່ ຖືກສັບດ້ວຍຄາດແດ່ ຖືກດາບຕັດຫົວແດ່ ພວກເຂົາຕາຍໃນບ່ອນນັ້ນແດ່ ໄດ້ຮັບທຸກປາງຕາຍແດ່ ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຄົ້າ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ອີກໄນໜຶ່ງ (ໂທດແຫ່ງກາມທັງຫຼາຍ) ມີກາມເປັນເຫດ ມີກາມເປັນຕົ້ນເຄົ້າ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍ ຊົນທັງຫຼາຍຕັດປ່ອງຍ່ອງເບົາແດ່ ຂະໂມຍລັກ ຍົກເຄົ້າແດ່ ປຸ້ນບ້ານເຮືອນແດ່ ດັກຈີ້ໃນທາງປ່ຽວແດ່ ລະເມີດພັນລະຍາຂອງຜູ້ອື່ນແດ່ ພຣະຣາຊາກໍຮັບສັ່ງໃຫ້ຈັບເຂົາລົງອາຍາດ້ວຍປະການຕ່າງ ໆ ຄື ໃຫ້ຄ່ຽນຕີດ້ວຍແສ້ແດ່ ໃຫ້ຄ່ຽນຕີດ້ວຍຫວາຍແດ່ ໃຫ້ຕີດ້ວຍໄມ້ພອງແດ່ ຕັດມືແດ່ ຕັດຕີນແດ່ ໆລໆ ເອົາດາບຕັດຫົວແດ່ ພວກເຂົາຕາຍໃນບ່ອນນັ້ນແດ່ ໄດ້ຮັບທຸກປາງຕາຍແດ່ ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກທີ່ຈະເພິ່ງເຫັນໄດ້ເອງ ມີກາມເປັນເຫດ ມີກາມເປັນຕົ້ນເຄົ້າ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ອີກໄນໜຶ່ງ (ໂທດແຫ່ງກາມທັງຫຼາຍ) ມີກາມເປັນເຫດ ມີກາມເປັນຕົ້ນເຄົ້າ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍ ຊົນທັງຫຼາຍປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ເມື່ອປະພຶດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດແລ້ວ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ແມ່ນຂໍ້ນີ້ກໍຊື່ວ່າເປັນໂທດແຫ່ງກາມທັງຫຼາຍ ເປັນກອງທຸກໃນສຳປະຣາຍະພົບ ມີກາມເປັນເຫດ ມີກາມເປັນຕົ້ນເຄົ້າ ມີກາມເປັນເຫດເກີດ ເກີດຍ້ອນເຫດແຫ່ງກາມທັງຫຼາຍນັ້ນແລ

ຄຳວ່າ ເຮົາເຫັນໂທດໃນກາມມະຄຸນແລ້ວ ອະທິບາຍວ່າ ເຫັນ ຄື ແນມເຫັນ ທຽບຄຽງພິຈາລະນາເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງເຊິ່ງໂທດໃນກາມມະຄຸນ ລວມຄວາມວ່າ ເຮົາເຫັນໂທດ ໃນກາມມະຄຸນແລ້ວ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ຍ້ອນກາມທັງຫຼາຍສວຍງາມ
ມີຣົດແຊບ ໜ້າຣື່ນເຣີງໃຈ

ຍົວຍຸຈິດດ້ວຍອາລົມຫຼາຍຮູບແບບ
ເຮົາເຫັນໂທດໃນກາມມະຄຸນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑៧៣] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ຄຳວ່າ ກາມ ນີ້ ເປັນອັນຕະລາຍ ເປັນເໝືອນຝີ
ເປັນອຸປັດທະວະ ເປັນໂຣກ ເປັນເໝືອນລູກສອນ ແລະເປັນໄພ
ເຮົາເຫັນໄພນີ້ໃນກາມມະຄຸນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (៣)

ຄຳວ່າ ຄຳວ່າ ກາມ ນີ້ ເປັນອັນຕະລາຍ ເປັນເໝືອນຝີ ເປັນອຸປັດວະ ເປັນໂຣກ ເປັນເໝືອນ ລູກສອນ ແລະເປັນໄພ ອະທິບາຍວ່າ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວ້ວ່າ ພິກຂຸທັງຫຼາຍ ຄຳວ່າ ໄພ ເປັນຊື່ຂອງກາມທັງຫຼາຍ ຄຳວ່າ ທຸກ ເປັນຊື່ຂອງກາມທັງຫຼາຍ ຄຳວ່າ ໂຣກ ພະຍາດ ເປັນຊື່ຂອງກາມທັງຫຼາຍ ຄຳວ່າ ຝີ ເປັນຊື່ຂອງກາມທັງຫຼາຍ ຄຳວ່າ ລູກສອນ ເປັນຊື່ຂອງກາມທັງຫຼາຍ ຄຳວ່າ ຄວາມຂ້ອງ ເປັນຊື່ຂອງກາມທັງຫຼາຍ ຄຳວ່າ ເປືອກຕົມ ເປັນຊື່ຂອງກາມທັງຫຼາຍ ຄຳວ່າ ການຕ້ອງຢູ່ໃນທ້ອງ ນີ້ ເປັນຊື່ຂອງກາມທັງຫຼາຍ

ຍ້ອນເຫດໃດ ຄຳວ່າ ໄພ ຈຶ່ງເປັນຊື່ຂອງກາມທັງຫຼາຍ ຍ້ອນບຸກຄົນນີ້ຍິນດີໃນກາມຣາຄະ ຖືກສັນທະຣາຄະຜູກພັນໄວ້ ຍ່ອມບໍ່ພົ້ນໄປຈາກໄພແມ່ນທີ່ເປັນໄປໃນພົບປັດຈຸບັນ ແລະບໍ່ພົ້ນໄປຈາກໄພແມ່ນທີ່ເປັນໄປໃນພົບໜ້າ ດັ່ງນັ້ນ ຄຳວ່າ ໄພ ນີ້ ຈຶ່ງເປັນຊື່ຂອງກາມທັງຫຼາຍ

ຍ້ອນເຫດໃດ ຄຳວ່າ ທຸກ ฯลฯ ຄຳວ່າ ໂຣກພະຍາດ ฯลฯ ຄຳວ່າ ຝີ ฯลฯ ຄຳວ່າ ລູກສອນ ฯลฯ ຄຳວ່າ ຄວາມຂ້ອງ ฯลฯ ຄຳວ່າ ເປືອກຕົມ ฯลฯ ຄຳວ່າ ການຢູ່ໃນທ້ອງ ฯลฯ ນີ້ ຈຶ່ງເປັນຊື່ຂອງກາມທັງຫຼາຍ ຍ້ອນບຸກຄົນນີ້ຍິນດີໃນກາມຣາຄະ ຖືກສັນທະຣາຄະຜູກພັນໄວ້ ຍ່ອມບໍ່ພົ້ນໄປຈາກທ້ອງແມ່ນທີ່ເປັນໄປໃນພົບປັດຈຸບັນ ແລະບໍ່ພົ້ນໄປຈາກທ້ອງແມ່ນທີ່ເປັນໄປໃນພົບໜ້າ ດັ່ງນັ້ນ ຄຳວ່າ ທຸກ ຄຳວ່າ ການຢູ່ໃນທ້ອງ ນີ້ ຈຶ່ງເປັນຊື່ຂອງກາມທັງຫຼາຍ

ປຸຖຸຊົນຕົກຕ່ຳດ້ວຍຣາຄະອັນໜ້າຍິນດີ
ຍ່ອມເຂົ້າເຖິງຄວາມເປັນສັດເກີດໃນທ້ອງອີກ ຍ້ອນກາມເຫຼົ່າໃດ
ກາມເຫຼົ່ານີ້ຮຽກວ່າ ໄພ ທຸກ ໂຣກພະຍາດ ຝີ ລູກສອນ
ຄວາມຂ້ອງ ເປືອກຕົມ ແລະການເກີດໃນທ້ອງ
ແຕ່ເມື່ອໃດ ພິກຂຸມີຄວາມພຽນເຜົາກິເລດ ບໍ່ລະສຳປະຊັນຍະ
ເມື່ອນັ້ນ ພິກຂຸຜູ້ເປັນເຊັ່ນນັ້ນກໍລ່ວງກາມເປັນເໝືອນທາງມື່ນ ທີ່ຂ້າມໄດ້ຍາກ
ເບິ່ງເຫັນໝູ່ສັດຜູ້ເຂົ້າເຖິງຊາດແລະຊະຣາ ດີ້ນຮົນຢູ່

ລວມຄວາມວ່າ ຄຳວ່າ ກາມ ນີ້ ເປັນອັນຕະລາຍ ເປັນເໝືອນຝີ ເປັນອຸປັດທະວະ ເປັນໂຣກ ເປັນເໝືອນລູກສອນ ແລະເປັນໄພ

ຄຳວ່າ ເຮົາເຫັນໄພນີ້ໃນກາມມະຄຸນແລ້ວ ອະທິບາຍວ່າ ເຫັນ ຄື ແນມເຫັນ ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວເຊິ່ງໄພນີ້ໃນກາມມະຄຸນ ລວມຄວາມວ່າ ເຮົາເຫັນໄພນີ້ໃນກາມມະຄຸນແລ້ວ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້າຈຶ່ງກ່າວວ່າ

ຄຳວ່າ ກາມ ນີ້ ເປັນອັນຕະລາຍ ເປັນເໝືອນຝີ
ເປັນອຸປັດທະວະ ເປັນໂຣກ ເປັນເໝືອນລູກສອນ ແລະເປັນໄພ
ເຮົາເຫັນໄພນີ້ໃນກາມມະຄຸນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໓໙] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ເຮົາຄອບງຳໄພທັງປວງເຫຼົ່ານີ້ ຄື
ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ
ລົມ ແດດ ເຫຼືອດ ແລະສັດເລືອຄານແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໙)

ຄຳວ່າ ຄວາມໜາວ ໃນຄຳວ່າ ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ອະທິບາຍວ່າ ຄວາມໜາວຍ່ອມມີດ້ວຍເຫດ ໒ ຢ່າງ ຄື (໑) ຄວາມໜາວ ດ້ວຍອຳນາດທາດກຳເຣີບພາຍໃນ (໒) ຄວາມໜາວດ້ວຍອຳນາດລະດູພາຍນອກ

ຄຳວ່າ ຄວາມຮ້ອນ ອະທິບາຍວ່າ ຄວາມຮ້ອນຍ່ອມມີດ້ວຍເຫດ ໒ ຢ່າງ ຄື (໑) ຄວາມຮ້ອນດ້ວຍອຳນາດທາດກຳເຣີບພາຍໃນ (໒) ຄວາມຮ້ອນດ້ວຍອຳນາດລະດູພາຍນອກ ຄວາມຫິວໂຫຍ ຮຽກວ່າ ຄວາມຫິວ ຄວາມກະຫາຍນ້ຳ ຮຽກວ່າ ຄວາມກະຫາຍ ລວມຄວາມວ່າ ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ

ຄຳວ່າ ລົມ ແດດ ເຫຼືອດ ແລະສັດເລືອຄານ ອະທິບາຍວ່າ

ຄຳວ່າ ລົມ ໄດ້ແກ່ ລົມຕາເວັນອອກ ລົມຕາເວັນຕົກ ລົມເໜືອ ລົມໃຕ້ ລົມມີຝຸ່ນ ລົມບໍ່ມີຝຸ່ນ ລົມໜາວ ລົມຮ້ອນ ລົມພັດເບົາ ລົມພັດແຮງ ລົມບ້າໝູ ລົມຈາກປີກນົກ ລົມຈາກປີກຄຸດ ລົມຈາກໃບຕານ ລົມຈາກວີ ຄວາມຮ້ອນຈາກດວງອາທິດ ຮຽກວ່າ ແດດ ແມງວັນຫົວເຫຼືອງ ຮຽກວ່າ ເຫຼືອດ ງູ ຮຽກວ່າ ສັດເລືອຄານ ລວມຄວາມວ່າ ລົມ ແດດ ເຫຼືອດ ແລະສັດເລືອຄານ

ຄຳວ່າ ເຮົາຄອບງຳໄພທັງປວງເຫຼົ່ານີ້ ອະທິບາຍວ່າ ຄອບງຳ ຄື ຖ້ວມທັບ ຮັດຄຶງ ຍ່ຳຍີແລ້ວ ລວມຄວາມວ່າ ເຮົາຄອບງຳໄພທັງປວງເຫຼົ່ານີ້ແລ້ວ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ເຮົາຄອບງຳໄພທັງປວງເຫຼົ່ານີ້ ຄື
ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ
ລົມ ແດດ ເຫຼືອດ ແລະສັດເລືອຄານແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໓໙] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ພຣະປັດເຈກສຳພຸດທະເຈົ້າລະຖິ້ມໝູ່ ມີຂັນເກີດດີແລ້ວ
ມີດອກບົວ (ຄືທຳ) ເປັນຜູ້ຍິ່ງໃຫຍ່ ຢູ່ໃນປ່າຕາມພໍໃຈໄດ້
ເໝືອນນາຄະ ລະຖິ້ມຝູງແລ້ວຢູ່ປ່າໄດ້ຕາມພໍໃຈ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໙)

ຄຳວ່າ ລະຖິ້ມໝູ່ ฯລฯ ເໝືອນນາຄະ ອະທິບາຍວ່າ ຊ້າງຕົວປະເສີດຮຽກວ່າ ນາຄະ ແມ່ນພຣະປັດເຈກສຳພຸດທະເຈົ້າ ກໍຊື່ວ່ານາຄະ ຍ້ອນເຫດໃດ ພຣະປັດເຈກສຳພຸດທະເຈົ້າຈຶ່ງ ຊື່ວ່ານາຄະ ພຣະປັດເຈກສຳພຸດທະເຈົ້າຊື່ວ່ານາຄະ ຍ້ອນບໍ່ເຮັດຄວາມຊົ່ວ ພຣະປັດເຈກສຳພຸດທະເຈົ້າຊື່ວ່ານາຄະ ຍ້ອນບໍ່ເຖິງ ພຣະປັດເຈກສຳພຸດທະເຈົ້າຊື່ວ່ານາຄະ ຍ້ອນບໍ່ກັບມາຫາອີກ

ພຣະປັດເຈກສຳພຸດທະເຈົ້າຊື່ວ່ານາຄະ ຍ້ອນບໍ່ເຮັດຄວາມຊົ່ວ ເປັນແນວໃດ?

ຄື ບາບອະກຸສົນທຳທັງຫຼາຍເປັນເຫດແຫ່ງຄວາມເສົ້າໝອງ ກໍ່ພົບໃໝ່ ມີຄວາມກະວົນກະວາຍ ມີທຸກເປັນວິບາກ ເປັນບ່ອນຕັ້ງແຫ່ງຊາດ ຊະຣາ ແລະມໍຣະນະຕໍ່ໄປ ຕັດຮຽກວ່າ ຄວາມຊົ່ວ

(ສົມຈິງດັ່ງຄາຖາປະພັນວ່າ)

ບຸກຄົນຜູ້ບໍ່ເຮັດບາບແມ່ນເລັກໜ້ອຍໃນໂລກ
ສະລັດສັງໂຍດເຄື່ອງຜູກພັນໄດ້ທັງໝົດ
ບໍ່ຕິດຂ້ອງຢູ່ໃນທຳເປັນເຄື່ອງຂ້ອງທັງປວງ ເປັນຜູ້ຫຼຸດພົ້ນແລ້ວ
ດຳຣົງຕົນໝັ້ນຄົງເຊັ່ນນັ້ນ ບັນດິດທັງຫຼາຍຮຽກວ່າ ນາຄະ

ພຣະປັດເຈກສຳພຸດທະເຈົ້ານັ້ນຊື່ວ່ານາຄະ ຍ້ອນບໍ່ເຮັດຄວາມຊົ່ວ ເປັນແນວນີ້
ພຣະປັດເຈກສຳພຸດທະເຈົ້ານັ້ນຊື່ວ່ານາຄະ ຍ້ອນບໍ່ເຖິງ ເປັນແນວໃດ?

ຄື ພຣະປັດເຈກສຳພຸດທະເຈົ້ານັ້ນ ບໍ່ເຖິງສັນທາຄະຕິ ບໍ່ເຖິງໂທສາຄະຕິ ບໍ່ເຖິງໂມຫາຄະຕິ ບໍ່ເຖິງພະຍາຄະຕິ ພຣະອົງບໍ່ດຳເນີນໄປດ້ວຍອຳນາດຣາຄະ ບໍ່ດຳເນີນໄປດ້ວຍອຳນາດໂທສະ ບໍ່ດຳເນີນໄປດ້ວຍອຳນາດໂມຫະ ບໍ່ດຳເນີນໄປດ້ວຍອຳນາດມານະ ບໍ່ດຳເນີນໄປດ້ວຍອຳນາດທິດຖິ ບໍ່ດຳເນີນໄປດ້ວຍອຳນາດອຸດທັດຈະ ບໍ່ດຳເນີນໄປດ້ວຍອຳນາດວິຈິກິດສາ ບໍ່ດຳເນີນໄປດ້ວຍອຳນາດອະນຸໄສ ຄື ບໍ່ດຳເນີນໄປ ບໍ່ອອກໄປ ບໍ່ຖືກພາໄປ ບໍ່ຖືກນຳໄປ ດ້ວຍທຳທີ່ກໍ່ຄວາມເປັນຝັກເປັນຝ່າຍ ພຣະປັດເຈກສຳພຸດທະເຈົ້າຊື່ວ່ານາຄະ ຍ້ອນບໍ່ເຖິງເປັນແນວນີ້

ພຣະປັດເຈກສຳພຸດທະເຈົ້າຊື່ວ່າ ນາຄະ ຍ້ອນບໍ່ກັບມາຫາ ເປັນແນວໃດ?

ຄື ກິເລດເຫຼົ່າໃດພຣະປັດເຈກສຳພຸດທະເຈົ້າລະໄດ້ແລ້ວ ດ້ວຍໂສດາປັດຕິມັກ ພຣະປັດເຈກສຳພຸດທະເຈົ້າບໍ່ມາ ບໍ່ກັບມາ ບໍ່ຫວນກັບມາສູ່ກິເລດເຫຼົ່ານັ້ນອີກ ກິເລດເຫຼົ່າໃດພຣະປັດເຈກສຳພຸດທະເຈົ້າລະໄດ້ແລ້ວ ດ້ວຍສະກະທາຄາມິມັກ ຯລຯ ດ້ວຍອະນາຄາມິມັກ ຯລຯ ດ້ວຍອະຣະຫັນຕະມັກ ທ່ານກໍບໍ່ມາ ບໍ່ກັບມາ ບໍ່ຫວນກັບມາສູ່ກິເລດເຫຼົ່ານັ້ນອີກ ພຣະປັດເຈກສຳພຸດທະເຈົ້ານັ້ນຊື່ວ່ານາຄະ ຍ້ອນບໍ່ກັບມາຫາ ເປັນແນວນີ້

ຄຳວ່າ ເໝືອນນາຄະຖິ້ມຝູງແລ້ວ ອະທິບາຍວ່າ ຊ້າງຕົວປະເສີດນັ້ນ ລະຖິ້ມ ຄື ທອດຖິ້ມ ປ່ອຍຖິ້ມຝູງແລ້ວ ຕົວດຽວ ຢຽບກ້າວຍ່າງເຂົ້າໄປໃນທ່າມກາງປ່າດົງ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ສັນໃດ

ແມ່ນພຣະປັດເຈກສຳພຸດທະເຈົ້າ ກໍລະຖິ້ມ ຄື ລະຖິ້ມ ປ່ອຍຖິ້ມໝູ່ຄະນະແລ້ວ ປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ຄື ໃຊ້ສອຍເສນາສະນະ ເປັນປ່າທຶບ ແລະປ່າເລິ່ງອັນສະຫງັດ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນບ່ອນຫຼີບຫຼີກຕາມລຳພັງຜູ້ດຽວ ທ່ານໄປຜູ້ດຽວ ຢືນຜູ້ດຽວ ນັ່ງຜູ້ດຽວ ນອນຜູ້ດຽວ ເຂົ້າໝູ່ບ້ານເພື່ອບິນທະບາດຜູ້ດຽວ ກັບຜູ້ດຽວ ນັ່ງໃນບ່ອນລັບຜູ້ດຽວ ອະທິຖານຈົງກົມຜູ້ດຽວ ປະພຶດຢູ່ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປຜູ້ດຽວ ລວມຄວາມວ່າ ເໝືອນນາຄະ ລະຖິ້ມຝູງແລ້ວ

ຄຳວ່າ ມີຂັນເກີດດີແລ້ວ ມີດອກບົວ (ຄືທຳ) ເປັນຜູ້ຍິ່ງໃຫຍ່ ອະທິບາຍວ່າ ຊ້າງຕົວປະເສີດນັ້ນ ມີຂັນເກີດດີແລ້ວ ຄື ເປັນຊ້າງສູງ ໗ ສອກແດ່ ສູງ ๘ ສອກແດ່ ສັນໃດ

ແມ່ນພຣະປັດເຈກສຳພຸດທະເຈົ້າ ກໍມີຂັນເກີດດີແລ້ວດ້ວຍສີນຂັນອັນເປັນອະເສຂະ ສະມາທິຂັນອັນເປັນອະເສຂະ ປັນຍາຂັນອັນເປັນອະເສຂະ ວິມຸດຕິຂັນອັນເປັນອະເສຂະ ວິມຸດຕິຍານະທັດສະນະຂັນອັນເປັນອະເສຂະ ສັນນັ້ນ

ຊ້າງຕົວປະເສີດນັ້ນ ຊື່ວ່າ ປະທຸມີ ສັນໃດ

ແມ່ນພຣະປັດເຈກສຳພຸດທະເຈົ້າກໍຊື່ວ່າ ປະທຸມີ ສັນນັ້ນ ຍ້ອນມີດອກບົວຄືໂພດຊົງ ໗ ປະການ ໄດ້ແກ່ ດອກບົວຄືສະຕິສຳໂພດຊົງ ທຳມະວິຈະຍະສຳໂພດຊົງ ວິຣິຍະສຳໂພດຊົງ ປີຕິ

ສຳໂພດຊົງ ປັດສັດທິສຳໂພດຊົງ ສະມາທິສຳໂພດຊົງ ອຸເປກຂາສຳໂພດຊົງ ຊ້າງຕົວປະເສີດ ນັ້ນ ຍິ່ງໃຫຍ່ດ້ວຍເຫື່ອແຮງ ກຳລັງ ຄວາມໄວ ຄວາມກ້າ ສັນໃດ

ແມ່ນພຣະປັດເຈກສຳພຸດທະເຈົ້າກໍເປັນຜູ້ຍິ່ງໃຫຍ່ດ້ວຍສີນ ສະມາທິ ປັນຍາ ວິມຸດຕິ ວິມຸດຕິຍານະທັດສະນະ ສັນນັ້ນ ລວມຄວາມວ່າ ມີຂັນເກີດດີແລ້ວ ມີດອກບົວ (ຄືທຳ) ເປັນຜູ້ຍິ່ງໃຫຍ່

ຄຳວ່າ ຢູ່ໃນປ່າຕາມພໍໃຈໄດ້ ອະທິບາຍວ່າ ຊ້າງຕົວປະເສີດນັ້ນ ຢູ່ໃນປ່າຕາມພໍໃຈໄດ້ ສັນໃດ ແມ່ນພຣະປັດເຈກສຳພຸດທະເຈົ້າ ກໍຢູ່ໃນປ່າຕາມພໍໃຈໄດ້ ສັນນັ້ນ ຄື ຢູ່ໃນປ່າຕາມພໍໃຈໄດ້ດ້ວຍປະຖົມຊານແດ່ ທຸຕິຍະຊານແດ່ ฯลฯ ຕະຕິຍະຊານແດ່ ฯลฯ ຈະຕຸດຖະຊານແດ່ ເມດຕາເຈໂຕວິມຸດຕິແດ່ ກະລຸນາເຈໂຕວິມຸດຕິແດ່ ฯลฯ ມຸທິຕາເຈໂຕວິມຸດຕິແດ່ ฯลฯ ອຸເປກຂາເຈໂຕວິມຸດຕິແດ່ ອາກາສານັນຈາຍະຕະນະສະມາບັດແດ່ ວິນຍານັນຈາຍະຕະນະສະມາບັດແດ່ ฯลฯ ອາກິນຈັນຍາຍະຕະນະສະມາບັດແດ່ ฯลฯ ເນວະສັນຍານາສັນຍາຍະຕະນະສະມາບັດແດ່ ฯลฯ ນິໂຣທະສະມາບັດແດ່ ฯลฯ ຢູ່ໃນປ່າຕາມພໍໃຈໄດ້ດ້ວຍຜົນສະມາບັດແດ່ ລວມຄວາມວ່າ ຢູ່ໃນປ່າຕາມພໍໃຈໄດ້ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ພຣະປັດເຈກສຳພຸດທະເຈົ້າລະຖິ້ມໝູ່ ມີຂັນເກີດດີແລ້ວ
ມີດອກບົວ (ຄືທຳ) ເປັນຜູ້ຍິ່ງໃຫຍ່ ຢູ່ໃນປ່າຕາມພໍໃຈໄດ້
ເໝືອນນາຄະ ລະຖິ້ມຝູງແລ້ວຢູ່ປ່າໄດ້ຕາມພໍໃຈ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໔໐] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ບຸກຄົນສຳຜັດວິມຸດຕິໃດ ເຊິ່ງເກີດຂຶ້ນຕາມສະໄໝ
ວິມຸດຕິນັ້ນເປັນໄປບໍ່ໄດ້ສຳລັບບຸກຄົນ
ຜູ້ຍິນດີການຄຸກຄີດ້ວຍໝູ່ຄະນະ
ບຸກຄົນພິຈາຣະນາຄຳເວົ້າຂອງພຣະປັດເຈກສຳພຸດທະເຈົ້າ
ຜູ້ເປັນເຜົ່າພັນແຫ່ງພຣະອາທິດແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໑໐)

ຄຳວ່າ ບຸກຄົນສຳຜັດວິມຸດຕິໃດ ເຊິ່ງເກີດຂຶ້ນຕາມສະໄໝ ວິມຸດຕິນັ້ນເປັນໄປບໍ່ໄດ້ສຳລັບບຸກຄົນ ຜູ້ຍິນດີການຄຸກຄີດ້ວຍໝູ່ຄະນະ ອະທິບາຍວ່າ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວ້ວ່າ ອານົນ ຂໍ້ທີ່ພິກຂຸ ມັກຄຸກຄີດ້ວຍໝູ່ຄະນະ ຍິນດີການຄຸກຄີດ້ວຍໝູ່ຄະນະ ປະກອບເນືອງ ໆ ເຊິ່ງຄວາມມັກຄຸກຄີດ້ວຍຄະນະ ມັກຄະນະ ຍິນດີຄະນະ ບັນເທີງຢູ່ໃນຄະນະ

ປະກອບເນືອງ ໆ ເຊິ່ງຄວາມມັກຄຸກຄີດ້ວຍຄະນະ ຈັກເປັນຜູ້ໄດ້ ເນກຂຳມະສຸກ (ສຸກຈາກການຫຼີກອອກບວດ) ປະວິເວກສຸກ (ສຸກຈາກຄວາມສະຫງັດ) ອຸປະສະມະສຸກ (ສຸກຈາກຄວາມເຂົ້າໄປສະງົບ) ສຳໂພທິສຸກ (ສຸກຈາກການຕັດສະຣູ້) ຕາມປາຖະໜາ ໄດ້ໂດຍບໍ່ຍາກ ໂດຍບໍ່ລຳບາກ ເປັນສິ່ງທີ່ເປັນໄປບໍ່ໄດ້ ອານົນ ຂໍ້ທີ່ພິກຂຸໃດຫຼີກອອກຈາກຄະນະ ຢູ່ຕາມລຳພັງຜູ້ດຽວ ພິກຂຸນັ້ນເພິ່ງຫວັງເນກຂຳມະສຸກ ປະວິເວກສຸກ ອຸປະສະມະສຸກ ສຳໂພທິສຸກ ຈັກເປັນຜູ້ໄດ້ສຸກນັ້ນຕາມປາຖະໜາ ໄດ້ໂດຍບໍ່ຍາກ ໂດຍບໍ່ລຳບາກ ກໍເປັນສິ່ງທີ່ເປັນໄປໄດ້

ອານົນ ຂໍ້ທີ່ພິກຂຸມັກຄຸກຄີດ້ວຍໝູ່ຄະນະ ຍິນດີການຄຸກຄີດ້ວຍໝູ່ຄະນະ ປະກອບເນືອງ ໆ ເຊິ່ງຄວາມມັກຄຸກຄີດ້ວຍຄະນະ ມັກຄະນະ ຍິນດີຄະນະ ບັນເທີງຢູ່ໃນຄະນະ ປະກອບເນືອງ ໆ ເຊິ່ງຄວາມມັກຄຸກຄີດ້ວຍຄະນະ ຈັກບັນລຸເຈໂຕວິມຸດຕິເຊິ່ງເກີດຂຶ້ນຕາມສະໄໝ ອັນໜ້າຍິນດີ ຫຼື ໂລກຸດຕະຣະມັກ ເຊິ່ງບໍ່ໄດ້ເກີດຂຶ້ນຕາມສະໄໝ ອັນບໍ່ກຳເຣີບ ຍ່ອມເປັນໄປບໍ່ໄດ້ ອານົນ ສ່ວນພິກຂຸໃດ ຫຼີກອອກຈາກຄະນະ ຢູ່ຕາມລຳພັງຜູ້ດຽວ ພິກຂຸນັ້ນ

ເພິ່ງຫວັງ ຄື ຈັກບັນລຸເຈໂຕວິມຸດຕິ ເຊິ່ງເກີດຂຶ້ນຕາມສະໄໝ ອັນໜ້າຍິນດີ ຫຼືໂລກຸດຕະຣະມັກ ເຊິ່ງບໍ່ໄດ້ເກີດຂຶ້ນ ຕາມສະໄໝ ອັນບໍ່ກຳເຣີບ ຍ່ອມເປັນໄປໄດ້ ລວມຄວາມວ່າ ບຸກຄົນສຳຜັດວິມຸດຕິໃດ ເຊິ່ງເກີດຂຶ້ນຕາມສະໄໝ ວິມຸດຕິນັ້ນເປັນໄປບໍ່ໄດ້ສຳລັບບຸກຄົນຜູ້ຍິນດີການຄຸກຄີດ້ວຍໝູ່ຄະນະ

ຄຳວ່າ ບຸກຄົນພິຈາຣະນາຄຳເວົ້າຂອງພຣະປັດເຈກສຳພຸດທະເຈົ້າ ຜູ້ເປັນເຜົ່າພັນແຫ່ງພຣະອາທິດແລ້ວ ອະທິບາຍວ່າ ພຣະສຸຣິຍະຮຽກວ່າ ພຣະອາທິດ ພຣະສຸຣິຍະນັ້ນເປັນພຣະໂຄດົມໂດຍພຣະໂຄດ ແມ່ນພຣະປັດເຈກສຳພຸດທະເຈົ້າກໍເປັນພຣະໂຄດົມໂດຍພຣະໂຄດ ພຣະປັດເຈກສຳພຸດທະເຈົ້ານັ້ນ ຈຶ່ງຜາກົດໂດຍໂຄດພຣະອາທິດ ຄື ເປັນ ເຜົ່າພັນໂດຍໂຄດພຣະອາທິດ ດັ່ງນັ້ນພຣະປັດເຈກສຳພຸດທະເຈົ້າ ຈຶ່ງຊື່ວ່າເປັນເຜົ່າພັນແຫ່ງພຣະອາທິດ

ຄຳວ່າ ບຸກຄົນພິຈາຣະນາຄຳເວົ້າຂອງພຣະປັດເຈກສຳພຸດທະເຈົ້າ ຜູ້ເປັນເຜົ່າພັນແຫ່ງພຣະອາທິດແລ້ວ ອະທິບາຍວ່າ ຟັງ ຄື ສະດັບ ຮຽນ ຊົງຈຳ ເຂົ້າໄປກຳນົດຄຳເວົ້າ ຄື ຄຳທີ່ເປັນແນວທາງ ເທດສະໜາ ຄຳສັ່ງສອນ ຄຳພ່ຳສອນຂອງພຣະຜູ້ເປັນເຜົ່າພັນ ແຫ່ງພຣະອາທິດ ລວມຄວາມວ່າ ບຸກຄົນພິຈາຣະນາຄຳເວົ້າຂອງພຣະປັດເຈກສຳພຸດທະເຈົ້າ ຜູ້ເປັນເຜົ່າພັນແຫ່ງພຣະອາທິດແລ້ວ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ບຸກຄົນສຳຜັດວິມຸດຕິໃດ ເຊິ່ງເກີດຂຶ້ນຕາມສະໄໝ
ວິມຸດຕິນັ້ນເປັນໄປບໍ່ໄດ້ສຳລັບບຸກຄົນ
ຜູ້ຍິນດີການຄຸກຄີດ້ວຍໝູ່ຄະນະ
ບຸກຄົນພິຈາຣະນາຄຳເວົ້າຂອງພຣະປັດເຈກສຳພຸດທະເຈົ້າ

ຜູ້ເປັນ ເຜົ່າພັນແຫ່ງພຣະອາທິດແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

**ທຸຕິຍະວັກ ຈົບ**

## ຕະຕິຍະວັກ

[໑໔໑] (ພຣະປັດເຈກສໍາພຸດທະເຈົ້າກ່າວວ່າ)

(ພຣະປັດເຈກສໍາພຸດທະເຈົ້າ) ປະພຶດລ່ວງທິດຖິ
ອັນເປັນສ້ຽນໜາມ ເຖິງນິຍາມ ໄດ້ສະເພາະມັກແລ້ວ
ເປັນຜູ້ມີຍານເກີດຂຶ້ນແລ້ວ ບໍ່ຕ້ອງໃຫ້ຜູ້ອື່ນແນະນໍາ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໑)

ຄໍາວ່າ (ພຣະປັດເຈກສໍາພຸດທະເຈົ້າ) ປະພຶດລ່ວງທິດຖິອັນເປັນສ້ຽນໜາມ ອະທິບາຍວ່າ ສັກກາຍະທິດຖິມີວັດຖຸ ໒໐ ຮຽກວ່າ ທິດຖິອັນເປັນສ້ຽນໜາມ ປຸຖຸຊົນຜູ້ບໍ່ໄດ້

ສະດັບ ໃນໂລກນີ້ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທໍາຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນໍາໃນທໍາຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທໍາຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນໍາໃນທໍາຂອງສັດຕະບຸຣຸດ ຍ່ອມເບິ່ງເຫັນຮູບໂດຍຄວາມເປັນອັດຕາ ເຫັນອັດຕາວ່າມີຮູບ ເຫັນຮູບໃນອັດຕາ ຫຼື ເຫັນອັດຕາໃນຮູບ ຍ່ອມເບິ່ງເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານໂດຍຄວາມເປັນອັດຕາ ເຫັນອັດຕາວ່າມີວິນຍານ ເຫັນວິນຍານໃນອັດຕາ ຫຼື ເຫັນອັດຕາໃນວິນຍານ ທິດຖິ ການຕົກຢູ່ໃນທິດຖິ ຄວາມຮົກທຶບ ຄື ທິດຖິ ຄວາມກັນດານ ຄື ທິດຖິ ສ້ຽນໜາມ ຄືທິດຖິ ຄວາມດີ້ນຮົນ ຄື ທິດຖິ ເຄື່ອງຜູກພັນ ຄື ທິດຖິ ຄວາມຖື ຄວາມຖືໝັ້ນ ຄວາມຍຶດໝັ້ນ ຄວາມຍຶດໝັ້ນຖືໝັ້ນ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິເດຍຣະຖີ ຄວາມຖືຂັດແຍ່ງ ຄວາມຖືວິປະຣິດ ຄວາມຖືວິປະລາດ ຄວາມຖືຜິດ ຄວາມຖືໃນສິ່ງທີ່ເປັນຄວາມຈິງວ່າເປັນຈິງເຫັນປານນີ້ ຈົນເຖິງທິດຖິ ໖໒ ນີ້ຊື່ວ່າທິດຖິອັນເປັນສ້ຽນໜາມ

ຄໍາວ່າ (ພຣະປັດເຈກສໍາພຸດທະເຈົ້າ) ປະພຶດລ່ວງທິດຖິອັນເປັນສ້ຽນໜາມ ໄດ້ແກ່ ປະພຶດລ່ວງ ຄື ກ້າວພົ້ນ ກ້າວລ່ວງ ລ່ວງເລີຍທິດຖິອັນເປັນສ້ຽນໜາມ ລວມຄວາມວ່າ (ພຣະປັດເຈກສໍາພຸດທະເຈົ້າ) ປະພຶດລ່ວງທິດຖິອັນເປັນສ້ຽນໜາມ

ຄໍາວ່າ ເຖິງນິຍາມ ໄດ້ສະເພາະມັກແລ້ວ ອະທິບາຍວ່າ ມັກ ໔ ຮຽກວ່າ ນິຍາມ ໄດ້ແກ່ ອະຣິຍະມັກມີອົງ ໘ ຄື

| | |
|---|---|
| ໑. ສໍາມາທິດຖິ | ໒. ສໍາມາສັງກັບປະ |
| ໓. ສໍາມາວາຈາ | ໔. ສໍາມາກໍາມັນຕະ |

๕. สำมาอาຊີວະ ๖. สำมาວາຍາມະ

๗. สำมาສະຕິ ๘. สำมาສະມາທິ

ພຣະປັດເຈກສຳພຸດທະເຈົ້າຜູ້ພຽບພ້ອມດ້ວຍອະຣິຍະມັກ ๔ ປະການ ຊື່ວ່າເຖິງນິຍາມ ຄື ເຖິງ ເຖິງພ້ອມ ບັນລຸ ສຳຜັດ ເຮັດໃຫ້ແຈ້ງ ລວມຄວາມວ່າ ເຖິງນິຍາມ

ຄຳວ່າ ໄດ້ສະເພາະມັກແລ້ວ ອະທິບາຍວ່າ ໄດ້ມັກແລ້ວ ໄດ້ສະເພາະມັກແລ້ວ ຄື ບັນລຸ ຖືກຕ້ອງ ເຮັດມັກໃຫ້ແຈ້ງແລ້ວ ລວມຄວາມວ່າ ເຖິງນິຍາມ ໄດ້ສະເພາະມັກແລ້ວ

ຄຳວ່າ ເປັນຜູ້ມີຍານເກີດຂຶ້ນແລ້ວ ບໍ່ຕ້ອງໃຫ້ຜູ້ອື່ນແນະນຳ ອະທິບາຍວ່າ ຍານ ເກີດຂຶ້ນ ຄື ເກີດຂຶ້ນພ້ອມ ບັງເກີດ ບັງເກີດຂຶ້ນ ຜາກົດແກ່ພຣະປັດເຈກສຳພຸດທະເຈົ້ານັ້ນ ຄື ຍານເກີດຂຶ້ນ ເກີດຂຶ້ນພ້ອມ ບັງເກີດ ບັງເກີດຂຶ້ນ ຜາກົດວ່າ ສັງຂານທັງປວງ ບໍ່ທ່ຽງ ฯລฯ ສັງຂານທັງປວງເປັນທຸກ ฯລฯ ທຳທັງປວງເປັນອະນັດຕາ ฯລฯ ສິ່ງໃດ ສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ລວມຄວາມວ່າ ເປັນຜູ້ມີຍານເກີດຂຶ້ນແລ້ວ

ຄຳວ່າ ບໍ່ຕ້ອງໃຫ້ຜູ້ອື່ນແນະນຳ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນບໍ່ໃຫ້ໃຜແນະນຳ ຄື ບໍ່ຕ້ອງມີໃຜເຮັດໃຫ້ເຊື່ອ ບໍ່ຕ້ອງມີໃຜເປັນປັດໄຈ ເຖິງຍານບໍ່ກ່ຽວຂ້ອງ ກັບຜູ້ອື່ນ ເປັນຜູ້ບໍ່ຫຼົງລືມ ຮູ້ຕົວ ມີສະຕິຕັ້ງໝັ້ນ ຮູ້ເຫັນຕາມຄວາມເປັນຈິງ ຄື ເປັນຜູ້ບໍ່ຫຼົງລືມ ຮູ້ຕົວ ມີສະຕິຕັ້ງໝັ້ນ ຮູ້ເຫັນຕາມຄວາມເປັນຈິງວ່າ ສັງຂານທັງປວງບໍ່ທ່ຽງ ฯລฯ ສັງຂານທັງປວງເປັນທຸກ ฯລฯ ທຳທັງປວງເປັນອະນັດຕາ ฯລฯ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ລວມຄວາມວ່າ ເປັນຜູ້ມີຍານເກີດຂຶ້ນແລ້ວ ບໍ່ຕ້ອງໃຫ້ຜູ້ອື່ນແນະນຳ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

(ພຣະປັດເຈກສຳພຸດທະເຈົ້າ) ປະພຶດລ່ວງທິດຖິ

ອັນເປັນສັ້ຽນໜາມ ເຖິງນິຍາມ ໄດ້ສະເພາະມັກແລ້ວ
ເປັນຜູ້ມີຍານເກີດຂຶ້ນແລ້ວ ບໍ່ຕ້ອງໃຫ້ຜູ້ອື່ນແນະນຳ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໔໘] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

(ພຣະປັດເຈກສຳພຸດທະເຈົ້າ) ເປັນຜູ້ບໍ່ໂລບບໍ່ຫຼອກລວງ
ບໍ່ກະຫາຍ ບໍ່ມີຄວາມລົບຫຼູ່ ກຳຈັດອາສາວະ (ກິເລດເໝືອນນ້ຳຍ້ອມ)
ແລະໂມຫະໄດ້ແລ້ວ ບໍ່ມີຄວາມມຸ້ງຫວັງ ໃນໂລກທັງປວງແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໘)

ຄຳວ່າ ເປັນຜູ້ບໍ່ໂລບ ບໍ່ຫຼອກລວງ ບໍ່ກະທາຍ ອະທິບາຍວ່າ ຕັນຫາຮຽກວ່າ ຄວາມໂລບ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ໗ລ໗ ອະພິດຊາ ອະກຸສົນມູນ ຄື ໂລພະ

ຕັນຫາ ຄືຄວາມໂລບນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນລະໄດ້ເດັດຂາດແລ້ວ ຕັດຮາກ ກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ ໄປບໍ່ໄດ້ ດັ່ງນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນ ຈຶ່ງຊື່ວ່າເປັນຜູ້ບໍ່ໂລບ

## ວ່າດ້ວຍຄວາມຫຼອກລວງ ໓ ຢ່າງ

ຄຳວ່າ ບໍ່ຫຼອກລວງ ອະທິບາຍວ່າ ຄວາມຫຼອກລວງ ໓ ຢ່າງ ຄື

໑. ຄວາມຫຼອກລວງກ່ຽວກັບການ ໃຊ້ສອຍປັດໄຈ
໒. ຄວາມຫຼອກລວງກ່ຽວກັບ ອິລິຍາບົດ
໓. ຄວາມຫຼອກລວງກ່ຽວກັບ ການເວົ້າລຽບຄຽງ

ຄວາມຫຼອກລວງກ່ຽວກັບການໃຊ້ສອຍປັດໄຈ ເປັນແນວໃດ?

ຄື ຄະຫະບໍດີທັງຫຼາຍໃນໂລກນີ້ ຍ່ອມນິມົນພິກຂຸ ຖວາຍຈີວອນ ບິນທະບາດ ເສນາສະ ນະ ແລະຄິລານະປັດໄຈເພສັດບໍຣິຂານ ພິກຂຸນັ້ນ ມີຄວາມປາຖະໜາຊົ່ວຊາມ ຖືກຄວາມຢາກ ຄອບງຳ ມີຄວາມຕ້ອງການຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິ ຂານ ຍ້ອນຕ້ອງການໄດ້ໃຫ້ຫຼາຍຍິ່ງຂຶ້ນ ຈຶ່ງບອກຄືນຈີວອນ ບິນທະບາດ ເສນາສະນະ ແລະຄິລາ ນະປັດໄຈເພສັດບໍຣິຂານ ທ່ານເວົ້າແນວນີ້ວ່າ ຈີວອນທີ່ມີຄ່າຫຼາຍຈະມີປະໂຫຍດອັນໃດແກ່ ສະມະນະ ສະມະນະ ຄວນທ່ຽວເລືອກເກັບຜ້າເກົ່າຈາກປ່າຊ້າ ກອງມູນຝອຍ ຫຼືຮ້ານຕະຫຼາດ ເອົາ ມາເຮັດ ສັງຄາຕິໃຊ້ ຈຶ່ງຈະເປັນການເໝາະສົມ ບິນທະບາດທີ່ມີຄ່າຫຼາຍຈະມີປະໂຫຍດອັນໃດແກ່ ສະມະນະ ສະມະນະຄວນສຳເລັດຄວາມເປັນຢູ່ດ້ວຍກ້ອນເຂົ້າທີ່ໄດ້ມາດ້ວຍລຳແຂ່ງ ໂດຍການທ່ຽວ ສະແຫວງຫາ ຈຶ່ງຈະເປັນການເໝາະສົມ ເສນາສະນະທີ່ມີຄ່າຫຼາຍຈະມີປະໂຫຍດອັນໃດແກ່ ສະມະນະ ສະມະນະຄວນຢູ່ທີ່ເຫງົ້າໄມ້ ຢູ່ທີ່ປ່າຊ້າ ຫຼືຢູ່ກາງແຈ້ງ ຈຶ່ງຈະເປັນການເໝາະສົມ ຄິລາ ນະປັດໄຈເພສັດບໍຣິຂານທີ່ມີຄ່າຫຼາຍຈະມີປະໂຫຍດອັນໃດແກ່ສະມະນະ ສະມະນະຄວນເຮັດຢາ ດ້ວຍນ້ຳມູດເນົ່າ ຫຼື ຕ່ອນໝາກສົ້ມມໍ ຈຶ່ງຈະເປັນການ ເໝາະສົມ

ຍ້ອນຕ້ອງການໄດ້ໃຫ້ຫຼາຍຍິ່ງຂຶ້ນນັ້ນ ທ່ານຈຶ່ງຄອງຈີວອນເສົ້າໝອງ ສັນບິນທະບາດ ເສົ້າໝອງ ໃຊ້ສອຍເສນາສະນະຊອມຊໍ່ ໃຊ້ຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ ຄະຫະ ບໍດີທັງຫຼາຍຮູ້ຈັກພິກຂຸນັ້ນແນວນີ້ວ່າ ສະມະນະອົງນີ້ ມີຄວາມປາຖະໜານ້ອຍ ສັນໂດດ ສະງົບ ສະຫງັດ ບໍ່ຄຸກຄີດ້ວຍໝູ່ຄະນະຜາຣົບຄວາມພຽນ ມີວາທະກຳຈັດຂັດເກົາ ກໍຍິ່ງນິມົນທ່ານໃຫ້ຮັບ ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານຫຼາຍຍິ່ງຂຶ້ນ ທ່ານຈຶ່ງເວົ້າ

ແນວນີ້ວ່າ ຍ້ອນພ້ຽບພ້ອມດ້ວຍເຫດ ໓ ປະການ ກຸນລະບຸດຜູ້ມີສັດທາຍ່ອມປະສົບບຸນຫຼາຍ ຄື ຍ້ອນພ້ຽບພ້ອມດ້ວຍສັດທາ ໆລໆ ຍ້ອນພ້ຽບພ້ອມດ້ວຍໄທຍະທຳ ໆລໆ ຍ້ອນພ້ຽບພ້ອມດ້ວຍພຣະທັກຂິໄນຍະບຸກຄົນ ກຸນລະບຸດຜູ້ມີສັດທາຍ່ອມປະສົບບຸນຫຼາຍ ທ່ານທັງຫຼາຍມີສັດທານີ້ຢູ່ ໄທຍະທຳນີ້ກໍມີຢູ່ພ້ອມ ທັງອາດຕະມາພາບກໍເປັນປະຕິຄາຫົກ ຖ້າອາດຕະມາພາບບໍ່ຮັບ ພວກທ່ານກໍຈັກເສື່ອມຈາກບຸນໄປສາ ອາດຕະມາພາບບໍ່ໄດ້ມີຄວາມຕ້ອງການ ດ້ວຍປັດໄຈນີ້ ແຕ່ຈັກຮັບເພື່ອອະນຸເຄາະພວກທ່ານ ຍ້ອນອາໄສເຫດນັ້ນ ທ່ານຈຶ່ງຮັບຈີວອນທັງຫຼາຍ ຮັບບິນທະບາດທັງຫຼາຍ ຮັບເສນາສະນະທັງຫຼາຍ ຮັບຄິລານະປັດໄຈເພສັດບໍຣິຂານ ທັງຫຼາຍ ການເຮັດໜ້ານິ່ວ ການເຮັດຄິ້ວຂະໝວດ ການຫຼອກລວງ ກິຣິຍາທີ່ຫຼອກລວງ ພາວະທີ່ຫຼອກລວງເຫັນປານນີ້ ນີ້ຮຽກວ່າ ຄວາມຫຼອກລວງກ່ຽວກັບການໃຊ້ສອຍປັດໄຈ

ຄວາມຫຼອກລວງກ່ຽວກັບອິລິຍາບົດ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ມີຄວາມປາຖະໜາຊົ່ວຊາມ ຖືກຄວາມຢາກ ຄອບງຳ ປາຖະໜາຈະໃຫ້ເຂົາຍ້ອງຍໍ ຄິດວ່າ ຄົນຈັກຍ້ອງຍໍເຮົາດ້ວຍອຸບາຍແນວນີ້ ຈຶ່ງສັງລວມການຍ່າງ ສັງລວມການຢືນ ສັງລວມການນັ່ງ ສັງລວມການນອນ ຕັ້ງສະຕິຍ່າງ ຕັ້ງສະຕິຢືນ ຕັ້ງສະຕິນັ່ງ ຕັ້ງສະຕິນອນ ເຮັດທຳທ່າເໝືອນພິກຂຸມີສະມາທິຍ່າງ ເໝືອນພິກຂຸມີສະມາທິຢືນ ເໝືອນພິກຂຸມີສະມາທິນັ່ງ ເໝືອນພິກຂຸມີສະມາທິນອນ ເປັນເໝືອນພິກຂຸຈະເລີນຊານ ອວດຕໍ່ໜ້າ ການຕັ້ງທ່າ ການວາງທ່າ ການດຳຣົງໝັ້ນອິລິຍາບົດ ການເຮັດໜ້ານິ່ວ ການເຮັດຄິ້ວຂະໝວດ ການຫຼອກລວງ ກິຣິຍາທີ່ຫຼອກລວງ ພາວະທີ່ຫຼອກລວງເຫັນປານນີ້ ນີ້ຮຽກວ່າ ຄວາມຫຼອກລວງກ່ຽວກັບອິລິຍາບົດ

ຄວາມຫຼອກລວງກ່ຽວກັບການເວົ້າລຽບຄຽງ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ມີຄວາມປາຖະໜາຊົ່ວຊາມ ຖືກຄວາມຢາກ ຄອບງຳ ປາຖະໜາຈະໃຫ້ເຂົາຍ້ອງຍໍ ຄິດວ່າ ຄົນຈັກຍ້ອງຍໍເຮົາດ້ວຍອຸບາຍແນວນີ້ ຈຶ່ງກ່າວວາຈາອິງອະຣິຍະທຳ ຄືເວົ້າວ່າ ພິກຂຸຜູ້ຊົງຈີວອນມີຮູບແບບແນວນີ້ ເປັນສະມະນະມີສັກໃຫຍ່ ຜູ້ໃຊ້ບາດ ໃຊ້ພາຊະນະໂລຫະ ໃຊ້ທຳມະກົກ ໃຊ້ຜ້າກອງນ້ຳ ໃຊ້ລູກກຸນແຈ ໃຊ້ເກີບ ໃຊ້ປະຄົດແອວ ໃຊ້ສາຍໂຍກບາດ ມີຮູບແບບແນວນີ້ ເປັນສະມະນະມີສັກໃຫຍ່ ເວົ້າວ່າ ພິກຂຸຜູ້ມີອຸປັດຊາຣະດັບນີ້ ເປັນສະມະນະມີສັກໃຫຍ່ ມີອາຈານຣະດັບນີ້ ໆລໆ ມີຜູ້ຮ່ວມອຸປັດຊາຣະດັບນີ້ ໆລໆ ມີຜູ້ຮ່ວມອາຈານຣະດັບນີ້ ໆລໆ ມີມິດ ໆລໆ ມີພັກພວກ ໆລໆ ມີຄົນທີ່ຄົບຫາກັນ ໆລໆ ມີສະຫາຍຣະດັບນີ້ ເປັນສະມະນະມີສັກໃຫຍ່ ເວົ້າວ່າ ພິກຂຸຜູ້ຢູ່ ໃນວິຫານມີຮູບແບບແນວນີ້ ເປັນສະມະນະມີສັກໃຫຍ່ ໆລໆ ຢູ່ໃນເຮືອນມີຫຼັງຄາດ້ານດຽວມີຮູບແບບແນວນີ້ ໆລໆ ຢູ່ໃນຜາສາດ ໆລໆ ຢູ່ໃນເຮືອນໂລ້ນ ໆລໆ ຢູ່ໃນຖ້ຳ ໆລໆ ຢູ່ໃນບ່ອນຫຼີບຫຼີກ ໆລໆ ຢູ່ໃນກຸດຕິ ໆລໆ ຢູ່ໃນເຮືອນຍອດ

ໆລໆ ຢູ່ທີ່ປ້ອມ ໆລໆ ຢູ່ໃນໂຮງມົນ ໆລໆ ຢູ່ໃນເຮືອນພັກ ໆລໆ ຢູ່ໃນເຮືອນຮັບຮອງ ໆລໆ ຢູ່ໃນມົນດົບ ໆລໆ ຢູ່ທີ່ເຫງົ້າໄມ້ ມີຮູບແບບແນວນີ້ ເປັນສະມະນະມີສັກໃຫຍ່

ອີກໄນໜຶ່ງ ພິກຂຸເປັນຜູ້ວາງໜ້າເສີຍເມີຍ ເຮັດໜ້ານິ່ວຄິ້ວຂະໝວດ ເວົ້າຕົວະຫຼອກລວງປີ້ນປ້ອນ ຕະລົບຕະແລງ ເປັນຜູ້ໄດ້ຮັບຍ້ອງຍໍດ້ວຍການວາງໜ້າວ່າ ສະມະນະນີ້ໄດ້ວິຫານສະມາບັດ ອັນມີຢູ່ເຫັນປານນີ້ ພິກຂຸນັ້ນ ຍ່ອມກ່າວຄຳເວົ້າເຊັ່ນນັ້ນ ອັນກ່ຽວເນື່ອງດ້ວຍໂລກຸດຕະຣະທຳ ແລະສູນຍະຕະນິບພານ ອັນເລິກເຊິ່ງ ຊ້ອນລັບ ລະອຽດອ່ອນ ປົດບັງ ການເຮັດໜ້ານິ່ວ ການເຮັດຄິ້ວຂະໝວດ ການຫຼອກລວງ ກິຣິຍາທີ່ຫຼອກລວງ ພາວະທີ່ຫຼອກລວງເຫັນປານນີ້ ນີ້ຮຽກວ່າ ຄວາມຫຼອກລວງກ່ຽວກັບການເວົ້າລຽບຄຽງ

ພຣະປັດເຈກສຳພຸດທະເຈົ້ານັ້ນລະຄວາມຫຼອກລວງ ໓ ຢ່າງເຫຼົ່ານີ້ໄດ້ແລ້ວ ຄື ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟຄືຍານແລ້ວ ດັ່ງນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນ ຊື່ວ່າບໍ່ຫຼອກລວງ

ຄຳວ່າ ບໍ່ກະຫາຍ ອະທິບາຍວ່າ ຕັນຫາຮຽກວ່າ ຄວາມກະຫາຍ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ໆລໆ ອະພິດຊາ ອະກຸສົນມູນ ຄື ໂລພະ

ຕັນຫາ ຄື ຄວາມກະຫາຍນັ້ນ ພຣະປັດເຈກສຳພຸດທະເຈົ້າລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນ ຈຶ່ງຊື່ວ່າບໍ່ກະຫາຍ ລວມຄວາມວ່າ ເປັນຜູ້ບໍ່ໂລບ ບໍ່ຫຼອກລວງ ບໍ່ກະຫາຍ

ຄຳວ່າ ບໍ່ມີຄວາມລົບຫຼູ່ ກຳຈັດອາສາວະ (ກິເລດເໝືອນນ້ຳຍ້ອມ) ແລະໂມຫະໄດ້ແລ້ວ ອະທິບາຍວ່າ

ຄຳວ່າ ຄວາມລົບຫຼູ່ ໄດ້ແກ່ ຄວາມລົບຫຼູ່ ຄື ກິຣິຍາທີ່ລົບຫຼູ່ ພາວະທີ່ລົບຫຼູ່ ຄວາມແຂງກະດ້າງ ກຳ ຄື ຄວາມແຂງກະດ້າງ

ຄຳວ່າ ອາສາວະ (ກິເລດເໝືອນນ້ຳຍ້ອມ) ອະທິບາຍວ່າ ຣາຄະ ຊື່ວ່າ ອາສາວະ ໂທສະ ຊື່ວ່າ ອາສາວະ ໂມຫະ ຊື່ວ່າອາສາວະ ໂກທະ ໆລໆ ອຸປະນາຫະ ໆລໆ ມັກຂະ ໆລໆ ປະລາສະ ໆລໆ ອະກຸສະລາພິສັງຂານທຸກປະເພດ ຊື່ວ່າ ອາສາວະ

ຄຳວ່າ ໂມຫະ ໄດ້ແກ່ ຄວາມບໍ່ຮູ້ໃນທຸກ ຄວາມບໍ່ຮູ້ໃນທຸກຂະສະມຸໄທ ຄວາມບໍ່ຮູ້ໃນທຸກຂະນິໂຣທະ ຄວາມບໍ່ຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ ຄວາມບໍ່ຮູ້ໃນສ່ວນອະດີດ ຄວາມບໍ່ຮູ້ໃນສ່ວນອະນາຄົດ ຄວາມບໍ່ຮູ້ໃນສ່ວນອະດີດແລະອະນາຄົດ ຄວາມບໍ່ຮູ້ໃນປະຕິດຈະສະມຸບບາດວ່າ ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຄວາມບໍ່ຮູ້ ຄວາມບໍ່ເຫັນ ຄວາມບໍ່ຕັດສະຣູ້ ຄວາມບໍ່

ຮູ້ໂດຍສົມຄວນ ຄວາມບໍ່ຮູ້ຕາມເປັນຈິງ ຄວາມບໍ່ແທງຕະຫຼອດ ຄວາມບໍ່ຖືເອົາໂດຍຖືກຕ້ອງ ຄວາມບໍ່ຫຍັ່ງລົງໂດຍຮອບຄອບ ຄວາມບໍ່ຄິດໄວ້ ຄວາມບໍ່ພິຈາລະນາ ຄວາມບໍ່ເຮັດໃຫ້ປະຈັກ ຄວາມຊາມປັນຍາ ຄວາມໂງ່ຈ້າ ຄວາມບໍ່ຮູ້ແຈ້ງ ຄວາມຫຼົງ ຄວາມລຸ້ມຫຼົງ ຄວາມຫຼົງໃຫຼ ອະວິດຊາ ໂອຄະ ຄື ອະວິດຊາ ໂຍຄະ ຄື ອະວິດຊາ ອະນຸໄສ ຄື ອະວິດຊາ ປະຣິຍຸດຖານ ຄື ອະວິດຊາ ຕາໜ່າງ ຄື ອະວິດຊາ ບ້ວງ ຄື ອະວິດຊາ ອະກຸສົນມູນ ຄື ໂມຫະ

ຄວາມລົບຫຼູ່ ອາສາວະ ແລະໂມຫະ ພຣະປັດເຈກສຳພຸດທະເຈົ້ານັ້ນຄາຍສາແລ້ວ ຖິ້ມ ກຳຈັດໄດ້ແລ້ວ ລະໄດ້ແລ້ວ ຕັດຂາດໄດ້ແລ້ວ ເຮັດໃຫ້ສະງົບໄດ້ແລ້ວ ຣະງັບໄດ້ແລ້ວ ເຮັດໃຫ້ເກີດຂຶ້ນບໍ່ໄດ້ອີກ ເຜົາດ້ວຍໄຟ ຄື ຍານແລ້ວ ລວມຄວາມວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ຈຶ່ງຊື່ວ່າບໍ່ມີຄວາມລົບຫຼູ່ ກຳຈັດອາສາວະ (ກິເລດເໝືອນນ້ຳຍ້ອມ) ແລະໂມຫະໄດ້ແລ້ວ

ຄຳວ່າ ບໍ່ມີຄວາມມຸ້ງຫວັງໃນໂລກທັງປວງແລ້ວ ອະທິບາຍວ່າ ຕັນຫາຮຽກວ່າ ຄວາມມຸ້ງຫວັງ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຄຳວ່າ ໃນໂລກທັງປວງ ໄດ້ແກ່ ໃນອະບາຍໂລກທັງປວງ ໃນມະນຸດໂລກທັງປວງ ໃນເທວະໂລກ ທັງປວງ ໃນຂັນທະໂລກທັງປວງ ໃນທາດໂລກທັງປວງ ໃນອາຍະຕະນະໂລກທັງປວງ

ຄຳວ່າ ບໍ່ມີຄວາມມຸ້ງຫວັງໃນໂລກທັງປວງແລ້ວ ອະທິບາຍວ່າ ເປັນຜູ້ບໍ່ມີຄວາມມຸ້ງຫວັງ ຄື ບໍ່ມີຕັນຫາ ບໍ່ມີຄວາມກະຫາຍໃນໂລກທັງປວງ ລວມຄວາມວ່າ ບໍ່ມີຄວາມມຸ້ງຫວັງໃນໂລກທັງປວງແລ້ວ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງ ກ່າວວ່າ

(ພຣະປັດເຈກສຳພຸດທະເຈົ້າ) ເປັນຜູ້ບໍ່ໂລບ ບໍ່ຫຼອກລວງ
ບໍ່ກະຫາຍ ບໍ່ມີຄວາມລົບຫຼູ່ ກຳຈັດອາສາວະ (ກິເລດເໝືອນນ້ຳຍ້ອມ)
ແລະໂມຫະໄດ້ແລ້ວ ບໍ່ມີຄວາມມຸ້ງຫວັງ ໃນໂລກທັງປວງແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໘໓] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ບຸກຄົນເພິ່ງລະເວັ້ນສະຫາຍຊົ່ວ ຜູ້ບໍ່ເຫັນປະໂຫຍດ
ຜູ້ຕັ້ງໝັ້ນຢູ່ໃນທຳທີ່ຜິດ ບໍ່ເພິ່ງຄົບຄົນຜູ້ຂວນຂວາຍ
ແລະຜູ້ຜະໝາດດ້ວຍຕົນເອງ
ເພິ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໓)

## ວ່າດ້ວຍມິດສາທິດຖິ ໑໐

ຄຳວ່າ ເພິ່ງລະເວັ້ນສະຫາຍຊົ່ວ ອະທິບາຍວ່າ ທີ່ຮຽກວ່າສະຫາຍຊົ່ວ ຄື ສະຫາຍຜູ້ປະກອບດ້ວຍມິດສາທິດຖິ ໑໐ ຄື

໑. ທານທີ່ໃຫ້ແລ້ວບໍ່ມີຜົນ
໒. ການບູຊາບໍ່ມີຜົນ
໓. ການບວງສວງບໍ່ມີຜົນ
໔. ກຳທີ່ເຮັດໄວ້ດີແລະເຮັດໄວ້ບໍ່ດີບໍ່ມີ
໕. ໂລກນີ້ບໍ່ມີ
໖. ໂລກໜ້າບໍ່ມີ
໗. ມານດາບໍ່ມີ
໘. ບິດາບໍ່ມີ
໙. ສັດທີ່ເປັນໂອປະປາຕິກະບໍ່ມີ
໑໐. ສະມະນະພາມທີ່ດຳເນີນຕົນໂດຍຊອບ ປະຕິບັດຊອບ ຜູ້ເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍຕົນເອງແລ້ວ ປະກາດໃຫ້ (ຜູ້ອື່ນ) ຮູ້ບໍ່ມີ ນີ້ຊື່ວ່າສະຫາຍຊົ່ວ

ຄຳວ່າ ເພິ່ງລະເວັ້ນສະຫາຍຊົ່ວ ໄດ້ແກ່ ເພິ່ງລະ ຄື ເພິ່ງລະເວັ້ນສະຫາຍຊົ່ວ ລວມຄວາມວ່າ ເພິ່ງລະເວັ້ນສະຫາຍຊົ່ວ

ຄຳວ່າ ຜູ້ບໍ່ເຫັນປະໂຫຍດ ຜູ້ຕັ້ງໝັ້ນຢູ່ໃນທຳທີ່ຜິດ ອະທິບາຍວ່າ ທີ່ຮຽກວ່າ ຜູ້ບໍ່ເຫັນປະໂຫຍດ ຄື ສະຫາຍຜູ້ປະກອບດ້ວຍມິດສາທິດຖິ ໑໐ ຄື

໑. ທານທີ່ໃຫ້ແລ້ວບໍ່ມີຜົນ
໒. ການບູຊາບໍ່ມີຜົນ
ຯລຯ
໑໐. ຜູ້ເຮັດໃຫ້ແຈ້ງໃນໂລກນີ້ແລະໂລກໜ້າດ້ວຍຕົນເອງແລ້ວປະກາດໃຫ້ (ຜູ້ອື່ນ) ຮູ້ບໍ່ມີ ນີ້ຊື່ວ່າ ຜູ້ບໍ່ເຫັນປະໂຫຍດ

ຄຳວ່າ ຜູ້ຕັ້ງໝັ້ນຢູ່ໃນທຳທີ່ຜິດ ອະທິບາຍວ່າ ຜູ້ຕັ້ງໝັ້ນຢູ່ໃນກາຍຍະກຳທີ່ຜິດ ຕັ້ງໝັ້ນຢູ່ໃນວະຈີກຳທີ່ຜິດ ຕັ້ງໝັ້ນໃນມະໂນກຳທີ່ຜິດ ໃນປານາຕິບາດ ໃນອະທິນນາທານ ໃນກາເມສຸມິດສາຈານ ໃນມຸສາວາດ ໃນປິສຸນາວາຈາ ໃນຜະຣຸສະວາຈາ ໃນສຳຜັບປະລາປະໃນອະພິດຊາ ໃນພະຍາບາດ ໃນມິດສາທິດຖິ ໃນສັງຂານ ໃນກາມມະຄຸນ ໕ ໃນນິວອນ ໕ ຄື ຕັ້ງຢູ່ ດ້ວຍດີ

ຂ້ອງ ຕິດ ຕິດແໜ້ນ ຕິດໃຈ ນ້ອມໃຈໄປໃນນິວອນ ລວມຄວາມວ່າ ຜູ້ບໍ່ເຫັນປະໂຫຍດ ຜູ້ຕັ້ງໝັ້ນຢູ່ໃນທໍາທີ່ຜິດ

ຄໍາວ່າ ຜູ້ຂວນຂວາຍ ໃນຄໍາວ່າ ບໍ່ເພິ່ງຄົບຄົນຜູ້ຂວນຂວາຍ ແລະຜູ້ຜະໝາດດ້ວຍຕົນເອງ ອະທິບາຍວ່າ ບຸກຄົນໃດສະແຫວງຫາ ຄົ້ນຫາ ເສາະຫາການ ປະພຶດໃນການນັ້ນ ຫຼາຍໃນການນັ້ນ ໜັກໃນການນັ້ນ ເອນໄປໃນການນັ້ນ ໂອນໄປໃນການນັ້ນ ໂນ້ມໄປໃນການນັ້ນ ນ້ອມໃຈໄປ ໃນການນັ້ນ ມີການນັ້ນເປັນໃຫຍ່ ບຸກຄົນນັ້ນຊື່ວ່າ ເປັນຜູ້ຂວນຂວາຍໃນການ ບຸກຄົນໃດສະແຫວງຫາຮູບດ້ວຍອໍານາດຕັນຫາ ຯລຯ ສະແຫວງຫາສຽງດ້ວຍອໍານາດຕັນຫາ ສະແຫວງຫາກລິ່ນ ຯລຯ ຣົດ ຯລຯ ໂຜດຖັບພະດ້ວຍອໍານາດຕັນຫາ ປະພຶດໃນການມະຄຸນນັ້ນ ຫຼາຍໃນການມະຄຸນນັ້ນ ໜັກໃນການມະຄຸນນັ້ນ ເອນໄປໃນການມະຄຸນນັ້ນ ໂອນໄປໃນການມະຄຸນນັ້ນ ນ້ອມໄປໃນການມະຄຸນນັ້ນ ນ້ອມໃຈໄປໃນການມະຄຸນນັ້ນ ມີການມະຄຸນນັ້ນເປັນໃຫຍ່ ບຸກຄົນນັ້ນຊື່ວ່າເປັນຜູ້ຂວນຂວາຍໃນການ

ບຸກຄົນໃດໄດ້ຮູບດ້ວຍອໍານາດຕັນຫາ ໄດ້ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະດ້ວຍອໍານາດຕັນຫາ ປະພຶດໃນການມະຄຸນນັ້ນ ຫຼາຍໃນການມະຄຸນນັ້ນ ໜັກໃນການມະຄຸນນັ້ນ ເອນໄປໃນການມະຄຸນນັ້ນ ໂອນໄປໃນການມະຄຸນນັ້ນ ນ້ອມໄປໃນການມະຄຸນນັ້ນ ນ້ອມໃຈໄປໃນການມະຄຸນນັ້ນ ມີການມະຄຸນນັ້ນເປັນໃຫຍ່ ບຸກຄົນນັ້ນຊື່ວ່າເປັນຜູ້ຂວນຂວາຍໃນການ

ບຸກຄົນໃດບໍຣິໂພກຮູບດ້ວຍອໍານາດຕັນຫາ ບໍຣິໂພກສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະດ້ວຍອໍານາດຕັນຫາ ປະພຶດໃນການມະຄຸນນັ້ນ ຫຼາຍໃນການມະຄຸນນັ້ນ ໜັກໃນການມະຄຸນນັ້ນ ເອນໄປໃນການມະຄຸນນັ້ນ ໂອນໄປໃນການມະຄຸນນັ້ນ ໂນ້ມໄປໃນການມະຄຸນນັ້ນ ນ້ອມໃຈໄປໃນການມະຄຸນນັ້ນ ມີການມະຄຸນນັ້ນເປັນໃຫຍ່ ບຸກຄົນນັ້ນກໍຊື່ວ່າ ເປັນຜູ້ຂວນຂວາຍໃນການ ຜູ້ກໍ່ການຜິດຖຽງ ຊື່ວ່າຜູ້ຂວນຂວາຍໃນການຜິດຖຽງ ຜູ້ເຮັດວຽກ ຊື່ວ່າຜູ້ຂວນຂວາຍໃນວຽກ ຜູ້ທ່ຽວໄປໃນໂຄຈອນ ຊື່ວ່າຜູ້ຂວນຂວາຍໃນໂຄຈອນ ຜູ້ມີປົກກະຕິເພ່ງ ກໍຊື່ວ່າຜູ້ຂວນຂວາຍໃນຊານ ສັນໃດ

ບຸກຄົນໃດສະແຫວງຫາ ຄົ້ນຫາ ເສາະຫາການ ປະພຶດໃນການມະຄຸນນັ້ນ ຫຼາຍໃນການມະຄຸນນັ້ນ ໜັກໃນການມະຄຸນນັ້ນ ເອນໄປໃນການມະຄຸນນັ້ນ ໂອນໄປໃນການມະຄຸນນັ້ນ ໂນ້ມໄປໃນການ ມະຄຸນນັ້ນ ນ້ອມໃຈໄປໃນການມະຄຸນນັ້ນ ມີການມະຄຸນນັ້ນເປັນໃຫຍ່ ບຸກຄົນນັ້ນກໍຊື່ວ່າເປັນຜູ້ຂວນຂວາຍໃນການ ບຸກຄົນໃດສະແຫວງຫາຮູບດ້ວຍອໍານາດຕັນຫາ ຯລຯ

ບຸກຄົນໃດໄດ້ຮູບດ້ວຍອໍານາດຕັນຫາ ຯລຯ ບຸກຄົນໃດບໍຣິໂພກຮູບດ້ວຍອໍານາດຕັນຫາ ຯລຯ ສຽງ ຯລຯ ກິ່ນ ຯລຯ ຣົດ ຯລຯ ໂຜດຖັບພະດ້ວຍອໍານາດຕັນຫາ ປະພຶດໃນການມະຄຸນນັ້ນ ຫຼາຍໃນການມະຄຸນນັ້ນ ໜັກໃນການມະຄຸນນັ້ນ ເອນໄປໃນການມະຄຸນນັ້ນ ໂອນໄປໃນ

ການມະຄຸນນັ້ນ ໂນ້ມໄປໃນການມະຄຸນນັ້ນ ນ້ອມໃຈໄປໃນການມະຄຸນນັ້ນ ມີການມະຄຸນນັ້ນເປັນໃຫຍ່ ບຸກຄົນນັ້ນຊື່ວ່າ ເປັນຜູ້ຂວນຂວາຍໃນການ ສັນນັ້ນ

ຄຳວ່າ ຜະໝາດ ອະທິບາຍວ່າ ຄວນກ່າວເລື້ອງຄວາມຜະໝາດ ຄວາມປ່ອຍຈິດໄປການເພີ່ມພູນການປ່ອຍຈິດໄປໃນກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຫຼືໃນການມະຄຸນ ໕ ການເຮັດໂດຍບໍ່ເຄົາລົບ ການເຮັດບໍ່ໃຫ້ຕິດຕໍ່ ການເຮັດທີ່ບໍ່ໝັ້ນຄົງ ຄວາມປະພຶດຫຍໍ້ທໍ້ຍ່ອນ ຄວາມປະຖິ້ມສັນທະ ການປະຖິ້ມທຸຣະ ຄວາມບໍ່ເສບ ຄວາມບໍ່ຈະເລີນ ຄວາມບໍ່ເຮັດໃຫ້ຫຼາຍ ຄວາມຕັ້ງໃຈບໍ່ຈິງ ຄວາມບໍ່ໝັ່ນປະກອບ ຄວາມຜະໝາດໃນການຈະເລີນກຸສົນທຳທັງຫຼາຍ ຄວາມຜະໝາດ ກິຣິຍາທີ່ ຜະໝາດ ພາວະທີ່ຜະໝາດມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າຄວາມຜະໝາດ

ຄຳວ່າ ບໍ່ເພິ່ງຄົບຄົນຜູ້ຂວນຂວາຍ ແລະຜູ້ຜະໝາດດ້ວຍຕົນເອງ ອະທິບາຍວ່າ ບໍ່ເພິ່ງຄົບຄົນຜູ້ຂວນຂວາຍ ແລະບໍ່ເພິ່ງຄົບຄົນຜູ້ຜະໝາດດ້ວຍຕົນເອງ ໄດ້ແກ່ ບໍ່ເພິ່ງຄົບ ບໍ່ເພິ່ງເສບເປັນນິດ ບໍ່ເພິ່ງຊ່ອງເສບ ບໍ່ຄວນເສບຮອບ ບໍ່ເພິ່ງປະພຶດໂດຍເອື້ອເຟື້ອ ບໍ່ເພິ່ງປະພຶດເອື້ອເຟື້ອໂດຍຊອບ ບໍ່ເພິ່ງສະມາທານປະພຶດດ້ວຍຕົນເອງ ລວມຄວາມວ່າ ບໍ່ເພິ່ງຄົບຄົນຜູ້ຂວນຂວາຍແລະຜູ້ຜະໝາດດ້ວຍຕົນເອງ ເພິ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

> ບຸກຄົນເພິ່ງລະເວັ້ນສະຫາຍຊົ່ວ ຜູ້ບໍ່ເຫັນປະໂຫຍດ
> ຜູ້ຕັ້ງໝັ້ນຢູ່ໃນທຳທີ່ຜິດ ບໍ່ເພິ່ງຄົບຄົນຜູ້ຂວນຂວາຍ
> ແລະຜູ້ຜະໝາດດ້ວຍຕົນເອງ
> ເພິ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໔໔] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

> ບຸກຄົນເພິ່ງຄົບມິດຜູ້ເປັນພະຫູສູດ ຊົງທຳ ຜູ້ຍິ່ງໃຫຍ່
> ມີປະຕິພານ ຮູ້ຈັກປະໂຫຍດແລ້ວ ເພິ່ງກຳຈັດຄວາມສົງໄສ
> ປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໔)

ຄຳວ່າ ຜູ້ເປັນພະຫູສູດ ໃນຄຳວ່າ ເພິ່ງຄົບ ໆລໆ ຜູ້ເປັນພະຫູສູດ ຊົງທຳ ອະທິບາຍວ່າມິດ ຜູ້ເປັນພະຫູສູດ (ຜູ້ໄດ້ຍິນໄດ້ຟັງຫຼາຍ) ຊົງຈຳສິ່ງທີ່ຮ່ຳຮຽນມາແລ້ວໄດ້ ສັ່ງສົມສິ່ງທີ່ ຮ່ຳຮຽນມາແລ້ວໄວ້ໄດ້ ຄື ທຳເຫຼົ່າໃດ ທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນ ພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ

ທຳເຫັນປານນັ້ນເປັນທຳທີ່ເຂົາຮ່ຳຮຽນມາຫຼາຍ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດ ຊັດເຈນຕາມທິດສະດີ

ຄຳວ່າ ຊົງທຳ ໄດ້ແກ່ ຊົງທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ

ຄຳວ່າ ເພິ່ງຄົບ ໆລໆ ຜູ້ເປັນພະຫູສູດ ຊົງທຳ ອະທິບາຍວ່າ ເພິ່ງຄົບ ຄື ເພິ່ງຄົບຫາ ເສບ ເສບເປັນມິດ ເພິ່ງຊ່ອງເສບ ເສບສະເພາະມິດຜູ້ເປັນພະຫູສູດ ແລະຜູ້ຊົງທຳ ລວມຄວາມວ່າ ເພິ່ງຄົບ ໆລໆ ຜູ້ເປັນພະຫູສູດ ຊົງທຳ

ຄຳວ່າ ມິດໆລໆ ຜູ້ຍິ່ງໃຫຍ່ ມີປະຕິພານ ອະທິບາຍວ່າ ມິດ ຜູ້ຍິ່ງໃຫຍ່ດ້ວຍສິນ ສະມາທິ ປັນຍາ ວິມຸດຕິ ວິມຸດຕິຍານະທັດສະນະ

## ວ່າດ້ວຍບຸກຄົນຜູ້ມີປະຕິພານ ໓ ຈຳພວກ

ຄຳວ່າ ມີປະຕິພານ ໄດ້ແກ່ ບຸກຄົນຜູ້ມີປະຕິພານ ໓ ຈຳພວກ ຄື

໑. ບຸກຄົນຜູ້ມີປະຕິພານຍ້ອນປະຣິຍັດ
໒. ບຸກຄົນຜູ້ມີປະຕິພານຍ້ອນປະຣິປຸດສາ
໓. ບຸກຄົນຜູ້ມີປະຕິພານຍ້ອນອະທິຄະມະ

ບຸກຄົນຜູ້ມີປະຕິພານຍ້ອນປະຣິຍັດ ເປັນແນວໃດ?

ຄື ບຸກຄົນບາງຄົນໃນສາດສະໜານີ້ ໄດ້ຮ່ຳຮຽນພຣະພຸດທະພົດ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸດານ ອິຕິວຸດຕະກະ ຊາຕະກະ ອັບພູຕະທຳ ເວທັນລະ ຍານ (ຄວາມຮູ້) ຂອງບຸກຄົນນັ້ນຍ່ອມຊັດແຈ້ງ ຍ້ອນອາໄສການຮ່ຳຮຽນ ບຸກຄົນນີ້ຊື່ວ່າຜູ້ມີປະຕິພານຍ້ອນປະຣິຍັດ

ບຸກຄົນຜູ້ມີປະຕິພານຍ້ອນປະຣິປຸດສາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນສາດສະໜານີ້ ເປັນຜູ້ໄຕ່ສວນໃນເລື້ອງຄວາມໝາຍ ໃນເລື້ອງທີ່ຄວນຮູ້ ໃນລັກສະນະ ໃນເຫດ ໃນຖານະ ແລະອະຖານະ (ຄວາມເປັນໄປໄດ້ແລະເປັນໄປບໍ່ໄດ້) ຍານຂອງເຂົາຍ່ອມຊັດແຈ້ງ ຍ້ອນອາໄສການໄຕ່ສວນ ບຸກຄົນນີ້ຊື່ວ່າ ຜູ້ມີປະຕິພານຍ້ອນປະຣິປຸດສາ

ບຸກຄົນຜູ້ມີປະຕິພານຍ້ອນອະທິຄະມະ ເປັນແນວໃດ?

ຄື ບຸກຄົນບາງຄົນໃນສາດສະໜານີ້ ໄດ້ບັນລຸສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ອະຣິຍະມັກ ໔ ສາມັນຍະຜົນ ໔ ປະຕິສຳພິທາ ໔ ອະພິນຍາ ໖ ບຸກຄົນນັ້ນຮູ້ເຫດ ຮູ້ຜົນ ຮູ້ນິຣຸດຕິ (ພາສາ) ເມື່ອຮູ້ເຫດ ເຫດ

ຍ່ອມຊັດແຈ້ງ ເມື່ອຮູ້ຜົນ ຜົນຍ່ອມຊັດແຈ້ງ ເມື່ອຮູ້ນິຣຸດຕິ ນິຣຸດຕິຍ່ອມຊັດແຈ້ງ ຍານໃນເຫດ ຜົນ ແລະນິຣຸດຕິທັງ ๓ ເຫຼົ່ານີ້ ຊື່ວ່າປະຕິພານະປະຕິສຳພິທາ

ພຣະປັດເຈກສຳພຸດທະເຈົ້າປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປເປັນໄປພ້ອມ ພຽບພ້ອມດ້ວຍປະຕິພານະປະຕິສຳພິທານີ້ ດັ່ງນັ້ນ ພຣະປັດເຈກສຳພຸດທະເຈົ້າຊື່ວ່າ ມີປະຕິພານ ຜູ້ໃດບໍ່ມີປະຣິຍັດ ບໍ່ມີປະຣິປຸດສາ ບໍ່ມີອະທິຄະມະ ຍານອັນໃດບໍ ຈັກຊັດແຈ້ງແກ່ເຂົາໄດ້ ລວມຄວາມວ່າ ມິດ ฯລฯ ຍິ່ງໃຫຍ່ ມີປະຕິພານ

ຄຳວ່າ ຮູ້ຈັກປະໂຫຍດແລ້ວ ເພິ່ງກຳຈັດຄວາມສົງໄສ ອະທິບາຍວ່າ ຮູ້ຈັກ ຄື ຮູ້ຍິ່ງ ຮູ້ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວ ເຊິ່ງປະໂຫຍດຕົນ ປະໂຫຍດຜູ້ອື່ນ ປະໂຫຍດທັງສອງຝ່າຍ ປະໂຫຍດໃນພົບປັດຈຸບັນ ປະໂຫຍດໃນພົບໜ້າ ປະໂຫຍດຢ່າງຍິ່ງ ເພິ່ງກຳຈັດ ໄດ້ແກ່ ເພິ່ງກຳຈັດສະເພາະ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີເຊິ່ງຄວາມສົງໄສອີກ ລວມຄວາມວ່າ ຮູ້ຈັກປະໂຫຍດແລ້ວ ເພິ່ງກຳຈັດຄວາມສົງໄສ ປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ບຸກຄົນເພິ່ງຄົບມິດຜູ້ເປັນພະຫູສູດ ຊົງທຳ ຜູ້ຍິ່ງໃຫຍ່
ມີປະຕິພານ ຮູ້ຈັກປະໂຫຍດແລ້ວ ເພິ່ງກຳຈັດຄວາມສົງໄສ
ປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໔໕] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

(ພຣະປັດເຈກສຳພຸດທະເຈົ້າ) ບໍ່ຊື່ນຊົມການຫຼິ້ນ
ຄວາມຍິນດີ ແລະກາມສຸກໃນໂລກ ບໍ່ໃສ່ໃຈ
ງົດເວັ້ນຈາກຖານະແຫ່ງການປະດັບຕົກແຕ່ງ ເວົ້າຄຳຈິງ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໕)

ຄຳວ່າ ການຫຼິ້ນ ຄວາມຍິນດີ ແລະກາມສຸກໃນໂລກ ອະທິບາຍວ່າ

ຄຳວ່າ ການຫຼິ້ນ ໄດ້ແກ່ ການຫຼິ້ນ ໒ ຢ່າງ ຄື (໑) ການຫຼິ້ນທາງກາຍ (໒) ການຫຼິ້ນທາງວາຈາ ฯລฯ ນີ້ຊື່ວ່າ ການຫຼິ້ນທາງກາຍ ฯລฯ ນີ້ຊື່ວ່າ ການຫຼິ້ນ ທາງວາຈາ

ຄຳວ່າ ຄວາມຍິນດີ ອະທິບາຍວ່າ

ຄຳວ່າ ຄວາມຍິນດີ ນີ້ ເປັນຊື່ຂອງຄວາມບໍ່ເບື່ອໜ່າຍ

ຄຳວ່າ ກາມສຸກ ອະທິບາຍວ່າ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ກາມມະຄຸນມີ ໕ ຢ່າງເຫຼົ່ານີ້ ໕ ຢ່າງອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
໒. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ฯລฯ
໓. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ฯລฯ
໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ฯລฯ
໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ພິກຂຸທັງຫຼາຍ ກາມມະຄຸນ ໕ ຢ່າງນີ້ແລ ພິກຂຸທັງຫຼາຍ ສຸກ ໂສມະນັດອັນໃດແລ ອາໄສກາມມະຄຸນ ໕ ນັ້ນເກີດຂຶ້ນ ໂສມະນັດນີ້ ຮຽກວ່າ ກາມອັນເປັນສຸກ

ຄຳວ່າ ໃນໂລກ ໄດ້ແກ່ ໃນມະນຸດໂລກ ລວມຄວາມວ່າ ການຫຼິ້ນ ຄວາມຍິນດີ ແລະ ການສຸກໃນໂລກ

ຄຳວ່າ ບໍ່ຊື່ນຊົມฯລฯ ບໍ່ໃສ່ໃຈ ອະທິບາຍວ່າ ບໍ່ຊື່ນຊົມ ຄື ບໍ່ໃສ່ໃຈ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງການຫຼິ້ນ ຄວາມຍິນດີ ແລະການສຸກໃນໂລກ ລວມຄວາມວ່າ ບໍ່ຊື່ນຊົມฯລฯ ບໍ່ໃສ່ໃຈ

## ວ່າດ້ວຍການປະດັບຕົກແຕ່ງ ໒ ຢ່າງ

ຄຳວ່າ ການປະດັບຕົກແຕ່ງ ໃນຄຳວ່າ ງົດເວັ້ນຈາກຖານະແຫ່ງການປະດັບຕົກແຕ່ງ ເວົ້າຄຳຈິງ ໄດ້ແກ່ ການປະດັບຕົກແຕ່ງ ໒ ຢ່າງ ຄື

໑. ການປະດັບຕົກແຕ່ງຂອງຄະລືຫັດ
໒. ການປະດັບຕົກແຕ່ງຂອງບັນພະຊິດ

ການປະດັບຕົກແຕ່ງຂອງຄະລືຫັດ ເປັນແນວໃດ?

ຄື ການແຕ່ງຜົມການແຕ່ງໜວດ ການທັດດອກໄມ້ ການປະພົມເຄື່ອງຫອມ ການຍ້ອມຜິວ ການໃຊ້ເຄື່ອງປະດັບ ການໃຊ້ເຄື່ອງແຕ່ງຕົວ ການນຸ່ງຜ້າສວຍງາມ ການປະດັບຂໍ້ມື ການໂພກຜ້າໂພກຫົວ ການອົບຕົວ ການນວດຕົວ ການອາບນ້ຳ ການດັດຕົວ ການແຍງແວ່ນ ການທາເປືອກຕາ ການສວມພວງດອກໄມ້ ການທາປາກ ການເຈີມໜ້າ ການຜູກຂໍ້ມື ການເກົ້າຜົມ ການໃຊ້ໄມ້ການເທົ້າ ການໃຊ້ທະນານ ການໃຊ້ພຣະຂັນ ການໃຊ້ຮົ່ມ ການສຸບເກີບສວຍງາມ ການຕິດກອບໜ້າ ການປັກປິ່ນ ການໃຊ້ວີ ການນຸ່ງຜ້າຂາວ ການນຸ່ງຜ້າຊາຍຍາວ ນີ້ຊື່ວ່າ ການປະດັບຕົກແຕ່ງຂອງຄະລືຫັດ

ການປະດັບຕົກແຕ່ງຂອງບັນພະຊິດ ເປັນແນວໃດ?

ຄື ການຕົກແຕ່ງຈີວອນ ການຕົກແຕ່ງບາດ ການຕົກແຕ່ງເສນາສະນະ ການຕົກແຕ່ງ ການປະດັບປະດາ ການຫຼິ້ນສະນຸກໃນການປະດັບ ຄວາມເພີດເພີນໃນການປະດັບ ຄວາມປາຖະໜາການປະດັບ ຄວາມເປັນຜູ້ປາຖະໜາການປະດັບ ກິຣິຍາທີ່ປະດັບ ຄວາມເປັນກິຣິຍາທີ່ປະດັບ ຮ່າງກາຍອັນເນົ່າເປື່ອຍນີ້ ຫຼື ບໍຣິຂານອັນເປັນພາຍນອກ ນີ້ຊື່ວ່າ ການປະດັບຕົກແຕ່ງຂອງບັນພະຊິດ

ຄຳວ່າ ເວົ້າຄຳຈິງ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ເປັນຜູ້ເວົ້າຈິງ ຕັ້ງໝັ້ນໃນຄວາມສັດ ມີຄຳເວົ້າໝັ້ນຄົງ ເຊື່ອຖືໄດ້ ບໍ່ກ່າວຄຳຫຼອກລວງຊາວໂລກ ງົດ ງົດເວັ້ນ ຄື ເວັ້ນຂາດຈາກຖານະແຫ່ງການປະດັບ ໄດ້ແກ່ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ງົດເວັ້ນຈາກຖານະແຫ່ງການປະດັບ ເວົ້າຄຳຈິງ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະ ເຈົ້ານັ້ນ ຈຶ່ງກ່າວວ່າ

(ພຣະປັດເຈກສຳພຸດທະເຈົ້າ) ບໍ່ຊື່ນຊົມການຫຼິ້ນ
ຄວາມຍິນດີ ແລະກາມມະສຸກໃນໂລກ ບໍ່ໃສ່ໃຈ
ງົດເວັ້ນຈາກຖານະແຫ່ງການປະດັບຕົກແຕ່ງ ເວົ້າຄຳຈິງ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໔໓] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

(ພຣະປັດເຈກສຳພຸດທະເຈົ້າ) ລະຖິ້ມ ບຸດ ທາຣະ ບິດາ ມານດາ
ຊັບ ທັນຍະຊາດ ພວກພ້ອງ ແລະກາມ ຕາມສ່ວນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໓)

ຄຳວ່າ ບຸດ ທາຣະ ບິດາ ມານດາ ອະທິບາຍວ່າ
ຄຳວ່າ ບຸດ ໄດ້ແກ່ ບຸດ ໔ ຈຳພວກ ຄື

໑. ບຸດເກີດຈາກຕົນ
໒. ບຸດເກີດໃນເຂດ
໓. ບຸດທີ່ເຂົາໃຫ້
໔. ບຸດທີ່ຢູ່ໃນສຳນັກ

ເມຍ ຮຽກວ່າ ທາຣະ
ຄຳວ່າ ບິດາ ໄດ້ແກ່ ບຸຣຸດຜູ້ໃຫ້ກຳເນີດ
ຄຳວ່າ ມານດາ ໄດ້ແກ່ ສະຕີຜູ້ໃຫ້ກຳເນີດ ລວມຄວາມວ່າ ບຸດ ທາຣະ ບິດາມານດາ

ຄຳວ່າ ຊັບ ທັນຍະຊາດ ພວກພ້ອງ ອະທິບາຍວ່າ ເງິນ ຄຳ ແກ້ວມຸກດາ ແກ້ວມະນີ ແກ້ວໄພທູນ ຫອຍສັງ ສີລາ ແກ້ວປະພານ ເງິນ ຄຳ ແກ້ວທັບທິມ ເພັດຕາແມວ ຮຽກວ່າ ຊັບ ປຸບພັນນະຊາດ ອະປະຣັນນະຊາດ ຮຽກວ່າ ທັນຍະຊາດ ເຂົ້າສາລີ ເຂົ້າຈ້າວ ເຂົ້າໜຽວ ເຂົ້າຟ່າງ ໝາກເດືອຍ ຫຍ້າກັບແກ້ ຊື່ວ່າ ປຸບພັນນະຊາດ

ເຄື່ອງແກງ ຊື່ວ່າ ອະປະຣັນນະຊາດ

ຄຳວ່າ ພວກພ້ອງ ໄດ້ແກ່ ພວກພ້ອງ ໔ ຈຳພວກ ຄື

໑. ພວກພ້ອງໂດຍຄວາມເປັນຍາດຊື່ວ່າພວກພ້ອງ
໒. ພວກພ້ອງໂດຍໂຄດ ຊື່ວ່າພວກພ້ອງ
໓. ພວກພ້ອງໂດຍຄວາມເປັນມິດ ຊື່ວ່າພວກພ້ອງ
໔. ພວກພ້ອງໂດຍສິນລະປະ ຊື່ວ່າພວກພ້ອງ

ລວມຄວາມວ່າ ຊັບ ທັນຍະຊາດ ພວກພ້ອງ

ຄຳວ່າ ກາມ ໃນຄຳວ່າ ລະຖິ້ມ ໆລໆ ແລະກາມ ຕາມສ່ວນແລ້ວ ໄດ້ແກ່ ກາມ ໒ ຢ່າງ ແບ່ງຕາມໝວດ ຄື (໑) ວັດຖຸກາມ (໒) ກິເລດກາມ ໆລໆ ເຫຼົ່ານີ້ຮຽກວ່າ ວັດຖຸກາມ ໆລໆ ເຫຼົ່ານີ້ຮຽກວ່າ ກິເລດກາມ

ຄຳວ່າ ລະຖິ້ມ ໆລໆ ແລະກາມ ໄດ້ແກ່ ກຳນົດຮູ້ວັດຖຸກາມ ລະ ກຳຈັດ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີກິເລດກາມອີກ

ຄຳວ່າ ລະຖິ້ມໆລໆ ແລະກາມ ຕາມສ່ວນແລ້ວ ອະທິບາຍວ່າ ກິເລດເຫຼົ່າໃດ ພຣະປັດເຈກສຳພຸດທະເຈົ້າລະໄດ້ແລ້ວ ດ້ວຍໂສດາປັດຕິມັກ ທ່ານກໍບໍ່ມາ ຄື ບໍ່ຍ້ອນມາ ບໍ່ກັບມາສູ່ກິເລດເຫຼົ່ານັ້ນອີກ ກິເລດເຫຼົ່າໃດ ທ່ານລະໄດ້ແລ້ວ ດ້ວຍສະກະທາຄາມີມັກ ໆລໆ ກິເລດເຫຼົ່າໃດ ທ່ານລະໄດ້ແລ້ວ ດ້ວຍອະນາຄາມີມັກ ໆລໆ ກິເລດເຫຼົ່າໃດ ທ່ານລະໄດ້ແລ້ວດ້ວຍອະຣະຫັນຕະມັກ ທ່ານກໍບໍ່ມາ ຄື ບໍ່ຍ້ອນມາ ບໍ່ກັບມາສູ່ກິເລດເຫຼົ່ານັ້ນອີກ ລວມຄວາມວ່າ ລະຖິ້ມໆລໆ ແລະກາມ ຕາມສ່ວນແລ້ວ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນ ຈຶ່ງກ່າວວ່າ

(ພຣະປັດເຈກສຳພຸດທະເຈົ້າ) ລະຖິ້ມ ບຸດ ທາຣະ ບິດາ ມານດາ
ຊັບ ທັນຍະຊາດ ພວກພ້ອງ ແລະກາມ ຕາມສ່ວນແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໔໗] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ກາມນີ້ເປັນເຄື່ອງຂ້ອງ ມີຄວາມສຸກໜ້ອຍ
ໃນກາມນີ້ມີຄວາມຍິນດີໜ້ອຍ ມີທຸກຫຼາຍ

ຜູ້ມີປັນຍາຮູ້ວ່າ ກາມນີ້ເປັນເໝືອນຂໍເຫຼັກແຫຼມແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (ກ)

ຄໍາວ່າ ກາມນີ້ເປັນເຄື່ອງຂ້ອງ ມີຄວາມສຸກໜ້ອຍ ອະທິບາຍວ່າ ຄໍາວ່າ ເຄື່ອງຂ້ອງ ເບັດ ເຫຍື່ອ ຄວາມກ່ຽວຂ້ອງ ຄວາມພົວພັນ ນີ້ ເປັນຊື່ຂອງ ກາມມະຄຸນ ໕

ຄໍາວ່າ ມີຄວາມສຸກໜ້ອຍ ອະທິບາຍວ່າ ສົມຈິງດັ່ງທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ ພິກຂຸທັງຫຼາຍ ກາມມະຄຸນມີ ໕ ຢ່າງເຫຼົ່ານີ້ ໕ ຢ່າງອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ອັນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກໍາໜັດ
໒. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ
໓. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ
໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ
໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ອັນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກໍາໜັດ ພິກຂຸທັງຫຼາຍ ກາມມະຄຸນ ໕ ຢ່າງນີ້ແລ

ພິກຂຸທັງຫຼາຍ ສຸກ ໂສມະນັດ ອັນໃດແລ ອາໄສກາມມະຄຸນ ໕ ນັ້ນເກີດຂຶ້ນ ໂສມະນັດນີ້ ຮຽກວ່າ ກາມມະຄຸນອັນເປັນສຸກ[໑] ສຸກນີ້ໜ້ອຍ ຄື ເລັກໜ້ອຍ ໜ້ອຍດຽວ ບໍ່ຫຼາຍ ຊົ່ວຊາມ ລາມົກ ສົກກະປົກ ເປິເປື້ອນ ລວມຄວາມວ່າ ກາມນີ້ເປັນເຄື່ອງຂ້ອງ ມີຄວາມສຸກໜ້ອຍ

ຄໍາວ່າ ໃນກາມນີ້ມີຄວາມຍິນດີໜ້ອຍ ມີທຸກຫຼາຍ ອະທິບາຍວ່າ ກາມທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ ມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນກາມນີ້ມີໂທດຢ່າງຍິ່ງ ພຣະຜູ້ມີພຣະພາກເຈົ້າຕັດວ່າກາມທັງຫຼາຍປຽບເໝືອນຮ່າງໂຄງກະດູກ ປຽບເໝືອນຕ່ອນຊີ້ນ ປຽບເໝືອນທວນໄຟຫຍ້າ ປຽບເໝືອນຂຸມຖ່ານເພີງ ປຽບເໝືອນຄວາມຝັນ ປຽບເໝືອນຂອງທີ່ຢືມມາ ປຽບເໝືອນໝາກໄມ້ຄາຕົ້ນ ປຽບເໝືອນຊຽງຊອຍຊີ້ນ ປຽບເໝືອນຫອກຫຼາວ ປຽບເໝືອນຫົວງູ ມີທຸກຫຼາຍ ໃນກາມນີ້ມີຄວາມຄັບແຄ້ນຫຼາຍ ມີໂທດຢ່າງຍິ່ງ ລວມຄວາມວ່າ ໃນກາມນີ້ມີຄວາມຍິນດີໜ້ອຍ ມີທຸກຫຼາຍ

ຄໍາວ່າ ຜູ້ມີປັນຍາຮູ້ວ່າ ກາມນີ້ເປັນເໝືອນຂໍເຫຼັກແລ້ວ ຄໍາວ່າ ກ້ອນເຫຼັກ ເບັດ ເຫຍື່ອ ຄວາມກ່ຽວຂ້ອງ ຄວາມຜູກພັນ ຄວາມພົວພັນ ນີ້ ເປັນຊື່ຂອງກາມມະຄຸນ ໕

ຄໍາວ່າ ວ່າ ເປັນຄໍາສົນທິ ເປັນຄໍາເຊື່ອມບົດ ເປັນຄໍາທີ່ເຮັດບົດໃຫ້ບໍລິບູນ ເປັນຄວາມສໍາພັນແຫ່ງອັກສອນ ເປັນຄວາມສະຫຼະສະຫຼວຍແຫ່ງພະຍັນຊະນະ ຄໍາວ່າ ວ່າ ນີ້ເປັນຄໍາເຊື່ອມບົດໜ້າກັບບົດຫຼັງເຂົ້ານໍາກັນ

ຄຳວ່າ ຜູ້ມີປັນຍາ ໄດ້ແກ່ ຜູ້ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຮູ້ ມີຍານ ມີປັນຍາຊັດແຈ້ງ ມີປັນຍາເຄື່ອງທຳລາຍກິເລດໄດ້

ຄຳວ່າ ຜູ້ມີປັນຍາຮູ້ວ່າ ກາມນີ້ເປັນເໝືອນຂໍເຫຼັກແລ້ວ ອະທິບາຍວ່າ ຜູ້ມີປັນຍາຮູ້ ຄື ຮູ້ທຽບຄຽງ ພິຈາລະນາ ເຮັດໃຫ້ກະຈ່າງ ເຮັດໃຫ້ຊັດແຈ້ງແລ້ວວ່າ ເປັນເໝືອນຂໍເຫຼັກ ເປັນເໝືອນເບັດ ເປັນເໝືອນເຫຍື່ອ ເປັນເຄື່ອງຂ້ອງ ເປັນເຄື່ອງຜູກພັນ ເປັນເຄື່ອງພົວພັນ ລວມຄວາມວ່າ ຜູ້ມີປັນຍາຮູ້ວ່າ ກາມນີ້ເປັນເໝືອນຂໍເຫຼັກແລ້ວ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ກາມນີ້ເປັນເຄື່ອງຂ້ອງ ມີຄວາມສຸກໜ້ອຍ
ໃນກາມນີ້ມີຄວາມຍິນດີໜ້ອຍ ມີທຸກຫຼາຍ
ຜູ້ມີປັນຍາຮູ້ວ່າ ກາມນີ້ເປັນເໝືອນຂໍເຫຼັກແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໘໗] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

(ພຣະປັດເຈກສຳພຸດທະເຈົ້າ) ທຳລາຍສັງໂຍດແລ້ວ
ເໝືອນສັດນ້ຳທຳລາຍຕາໜ່າງ
ແລະເໝືອນໄຟໄໝ້ເຊື້ອມອດໝົດໄປບໍ່ກັບມາ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໗)

ຄຳວ່າ ທຳລາຍສັງໂຍດແລ້ວ ໄດ້ແກ່ ສັງໂຍດ ໑໐ ຢ່າງ ຄື

| | |
|---|---|
| ໑. ກາມຣາຄະສັງໂຍດ | (ສັງໂຍດຄືຄວາມກຳໜັດໃນກາມ) |
| ໒. ປະຕິຄະສັງໂຍດ | (ສັງໂຍດຄືຄວາມກະທົບກະທັ່ງໃນໃຈ) |
| ໓. ມານະສັງໂຍດ | (ສັງໂຍດຄືຄວາມຖືຕົນວ່າເປັນນັ້ນເປັນນີ້) |
| ໔. ທິດຖິສັງໂຍດ | (ສັງໂຍດຄືຄວາມເຫັນຜິດ) |
| ໕. ວິຈິກິດສາສັງໂຍດ | (ສັງໂຍດຄືຄວາມສົງໄສ) |
| ໖. ສີລັບພະຕະປະຣາມາດສັງໂຍດ | (ສັງໂຍດຄືຄວາມຖືໝັ້ນສິນພົດ) |
| ໗. ພະວະຣາຄະສັງໂຍດ | (ສັງໂຍດຄືຄວາມຕິດໃຈປາຖະໜາໃນພົບ) |
| ໘. ອິດສາສັງໂຍດ | (ສັງໂຍດຄືຄວາມຣິດສະຫຍາ) |
| ໙. ມັດສະຣິຍະສັງໂຍດ | (ສັງໂຍດຄືຄວາມຂີ້ຖີ່) |
| ໑໐. ອະວິດຊາສັງໂຍດ | (ສັງໂຍດຄືຄວາມບໍ່ຮູ້) |

ຄຳວ່າ ທຳລາຍສັງໂຍດແລ້ວ ອະທິບາຍວ່າ ທະລາຍ ທຳລາຍ ຄື ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງສັງໂຍດ ໑໐ ຢ່າງ ລວມຄວາມວ່າ ທຳລາຍສັງໂຍດແລ້ວ

ຄຳວ່າ ເໝືອນສັດນ້ຳທຳລາຍຕາໜ່າງ ອະທິບາຍວ່າ ຕາໜ່າງທີ່ເຮັດດ້ວຍດ້າຍ ຮຽກວ່າ ຕາໜ່າງ ນ້ຳທ່າຮຽກວ່າ ນ້ຳ ປາຮຽກວ່າ ສັດນ້ຳ ອະທິບາຍວ່າ ປາທຳລາຍ ເຮັດໃຫ້ຂາດ ເຮັດໃຫ້ຈີກ ເຮັດໃຫ້ພັງ ເຮັດໃຫ້ຕາໜ່າງພັງທະລາຍແລ້ວ ແຫວກວ່າຍ ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປໄດ້ ສັນໃດ ຕາໜ່າງມີ ໒ ຊະນິດ ຄື (໑) ຕາໜ່າງຕັນຫາ (໒) ຕາໜ່າງທິດຖິ ຯລຯ ນີ້ຊື່ວ່າຕາໜ່າງຕັນຫາ ຯລຯ ນີ້ຊື່ວ່າຕາໜ່າງທິດຖິ

ພຣະປັດເຈກສຳພຸດທະເຈົ້ານັ້ນລະຕາໜ່າງຕັນຫາ ສະລັດຖິ້ມຕາໜ່າງທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະຕາໜ່າງຕັນຫາ ສະລັດຖິ້ມຕາໜ່າງທິດຖິໄດ້ແລ້ວ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງບໍ່ຂ້ອງຂັດໃນຮູບ ສຽງ ກິ່ນ ຯລຯ ຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ໄດ້ຮັບຮູ້ ແລະໃນ ທຳມາຣົມທີ່ເພິ່ງຮູ້ແຈ້ງ ຄື ບໍ່ຢຶດ ບໍ່ຜູກ ບໍ່ພົວພັນ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ເໝືອນສັດນ້ຳທຳລາຍຕາໜ່າງ

ຄຳວ່າ ເໝືອນໄຟໄໝ້ເຊື້ອມອດໝົດໄປບໍ່ກັບມາ ອະທິບາຍວ່າ ໄຟເມື່ອໄໝ້ເຊື້ອຄືຫຍ້າ ແລະໄມ້ ໄປ ບໍ່ກັບມາ ສັນໃດ ກິເລດເຫຼົ່າໃດ ພຣະປັດເຈກສຳພຸດທະເຈົ້ານັ້ນ ລະໄດ້ແລ້ວດ້ວຍໂສດາປັດຕິມັກ ທ່ານບໍ່ມາ ຄື ບໍ່ຍ້ອນມາ ບໍ່ກັບມາສູ່ກິເລດເຫຼົ່ານັ້ນອີກ ກິເລດເຫຼົ່າໃດທ່ານລະໄດ້ແລ້ວດ້ວຍສະກະທາຄາມິມັກ ຯລຯ ກິເລດເຫຼົ່າໃດທ່ານລະໄດ້ແລ້ວດ້ວຍອະນາຄາມິມັກ ກິເລດເຫຼົ່າໃດທ່ານລະໄດ້ແລ້ວ ດ້ວຍອະຣະຫັນຕະມັກ ທ່ານກໍບໍ່ມາ ຄື ບໍ່ຍ້ອນມາ ບໍ່ກັບມາສູ່ກິເລດເຫຼົ່ານັ້ນອີກ ສັນນັ້ນຄືກັນ ລວມຄວາມວ່າ ເໝືອນໄຟໄໝ້ເຊື້ອມອດໝົດໄປບໍ່ກັບມາ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

(ພຣະປັດເຈກສຳພຸດທະເຈົ້າ) ທຳລາຍສັງໂຍດແລ້ວ

ເໝືອນສັດນ້ຳທຳລາຍຕາໜ່າງ
ແລະເໝືອນໄຟໄໝ້ເຊື້ອມອດໝົດໄປບໍ່ກັບມາ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໔໙] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ພິກຂຸເປັນຜູ້ບໍ່ສອດສ່າຍຈັກຂຸ
ແລະບໍ່ເປັນຜູ້ມີຕີນຢູ່ບໍ່ສຸກ ຄຸ້ມຄອງອິນຊີ
ຮັກສາໃຈໄດ້ແລ້ວ ບໍ່ຊຸ່ມດ້ວຍກິເລດ ໄຟກິເລດບໍ່ໄດ້ເຜົາ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໙)

# ວ່າດ້ວຍຜູ້ບໍ່ສອດສ່າຍຈັກຂຸ

ຄຳວ່າ ເປັນຜູ້ບໍ່ສອດສ່າຍຈັກຂຸ ແລະບໍ່ເປັນຜູ້ມີຕີນຢູ່ບໍ່ສຸກ ອະທິບາຍວ່າ

ພິກຂຸເປັນຜູ້ສອດສ່າຍຈັກຂຸ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ເປັນຜູ້ມີຕາລ້ອກແລັກ ຄື ເປັນຜູ້ປະກອບດ້ວຍຄວາມເປັນຄົນມີຕາລ້ອກແລັກ ດ້ວຍຄິດວ່າ ຮູບທີ່ຍັງບໍ່ເຄີຍເບິ່ງ ເຮົາຄວນເບິ່ງ ຮູບທີ່ເຮົາເຄີຍເບິ່ງແລ້ວຄວນຜ່ານໄປເລີຍ ຈຶ່ງເປັນຜູ້ຂວນຂວາຍການທ່ຽວໄປດົນນານ ຫຼື ການທ່ຽວໄປບໍ່ມີຈຸດໝາຍ ຈາກອາຣາມໜຶ່ງໄປສູ່ອີກອາຣາມໜຶ່ງ ຈາກອຸທະຍານໜຶ່ງໄປສູ່ອີກອຸທະຍານໜຶ່ງ ຈາກບ້ານໜຶ່ງໄປສູ່ອີກບ້ານໜຶ່ງ ຈາກນິຄົມໜຶ່ງໄປສູ່ອີກນິຄົມໜຶ່ງ ຈາກນະຄອນໜຶ່ງໄປສູ່ອີກນະຄອນໜຶ່ງ ຈາກຣັດໜຶ່ງໄປສູ່ອີກຣັດໜຶ່ງ ຈາກຊົນນະບົດໜຶ່ງໄປສູ່ອີກຊົນນະບົດໜຶ່ງ ເພື່ອເບິ່ງຮູບ ພິກຂຸຊື່ວ່າເປັນຜູ້ສອດສ່າຍຈັກຂຸ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເຂົ້າສູ່ບໍລິເວນບ້ານ ຍ່າງໄປຕາມຖະໜົນບໍ່ສັງລວມ ຍ່າງແນມເບິ່ງຊ້າງ ແນມເບິ່ງມ້າ ແນມເບິ່ງລົດ ແນມເບິ່ງພົນຍ່າງ ແນມເບິ່ງເດັກຊາຍ ແນມເບິ່ງເດັກຍິງ ແນມເບິ່ງສະຕີ ແນມເບິ່ງບຸຣຸດ ແນມເບິ່ງຮ້ານຕະຫຼາດ ແນມເບິ່ງໜ້າມຸກເຮືອນ ແນມເບິ່ງຂ້າງເທິງ ແນມເບິ່ງຂ້າງລຸ່ມ ແນມເບິ່ງທິດນ້ອຍທິດໃຫຍ່ ພິກຂຸຊື່ວ່າເປັນຜູ້ສອດສ່າຍຈັກຂຸ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເຫັນຮູບທາງຕາແລ້ວ ເປັນຜູ້ຮວບຖື ເປັນຜູ້ແຍກຖື (ອະໄວຍະວະສ່ວນຕ່າງໆ) ຍ່ອມບໍ່ປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວຈະເປັນເຫດໃຫ້ບາບອະກຸສົນທຳ ຄື ອະພິດຊາແລະໂທມະນັດຄອບງຳໄດ້ ຍ່ອມບໍ່ຮັກສາຈັກຂຸນຊີ ຍ່ອມບໍ່ເຖິງຄວາມສັງລວມໃນຈັກຂຸນຊີ ພິກຂຸຊື່ວ່າເປັນຜູ້ສອດສ່າຍຈັກຂຸ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເປັນຜູ້ຂວນຂວາຍເບິ່ງການລະຫຼິ້ນ ອັນເປັນຂ້າເສິກແກ່ກຸສົນເຫັນປານນີ້ ເໝືອນສະມະນະພາມຜູ້ຈະເລີນບາງພວກບໍຣິໂພກອາຫານທີ່ເຂົາໃຫ້ດ້ວຍສັດທາແລ້ວ ຍັງຂວນຂວາຍເບິ່ງການຫຼິ້ນອັນເປັນຂ້າເສິກແກ່ກຸສົນເຫັນປານນີ້ ຄື ການຟ້ອນ ການຂັບຮ້ອງ ການເສບດົນຕີ ການເບິ່ງມະໂຫລະສົບ ການເລົ່ານິທານ ການຫຼິ້ນຕົບມື ການຫຼິ້ນປຸກຜີ ການຫຼິ້ນຕີກອງ ການສ້າງສາກບ້ານເມືອງໃຫ້ສວຍງາມ ການລະຫຼິ້ນຂອງຄົນຈັນທານ ການຫຼິ້ນແປ້ນໂຍກ ການລະຫຼິ້ນໜ້າສົບ ການແຂ່ງຂັນຊ້າງ ການແຂ່ງມ້າ ການແຂ່ງຂັນກະບື ການແຂ່ງຂັນງົວ ການແຂ່ງຂັນແບ້ ການແຂ່ງຂັນແກະ ການແຂ່ງຂັນໄກ່ ການແຂ່ງຂັນນົກກະທາ ການຣຳກະບີ່ກະບອງ ການຊົກມວຍ ມວຍປ້ຳ ການຣົບ ການກວດພົນສວນສະນາມ ການຈັດກະບວນທັບ ພິກຂຸຊື່ວ່າເປັນຜູ້ສອດສ່າຍຈັກຂຸ ເປັນແນວນີ້ແດ່

ພິກຂຸເປັນຜູ້ບໍ່ສອດສ່າຍຈັກຂຸ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ບໍ່ເປັນຜູ້ມີຕາລ້ອກແລັກ ຄື ບໍ່ປະກອບດ້ວຍຄວາມເປັນຜູ້ມີຕາລ້ອກແລັກ ດ້ວຍຄິດວ່າ ຮູບທີ່ຍັງບໍ່ເຄີຍເບິ່ງ ເຮົາຄວນເບິ່ງ ຮູບທີ່ເຮົາເຄີຍເບິ່ງແລ້ວ ຄວນ

ຜ່ານໄປເລີຍ ຈຶ່ງບໍ່ເປັນຜູ້ຂວນຂວາຍການທ່ຽວໄປດົນນານ ຫຼື ການທ່ຽວໄປບໍ່ມີຈຸດໝາຍຈາກອາຮາມໜຶ່ງໄປສູ່ອີກອາຮາມໜຶ່ງ ຈາກອຸທະຍານໜຶ່ງໄປສູ່ອີກອຸທະຍານໜຶ່ງ ຈາກບ້ານໜຶ່ງໄປສູ່ອີກບ້ານໜຶ່ງ ຈາກນິຄົມໜຶ່ງໄປສູ່ອີກນິຄົມໜຶ່ງ ຈາກນະຄອນໜຶ່ງໄປສູ່ອີກນະຄອນໜຶ່ງ ຈາກຣັດໜຶ່ງໄປສູ່ອີກຣັດໜຶ່ງ ຈາກຊົນນະບົດໜຶ່ງໄປສູ່ອີກຊົນນະບົດໜຶ່ງ ເພື່ອເບິ່ງຮູບພິກຂຸຊື່ວ່າເປັນຜູ້ບໍ່ສອດສ່າຍຈັກຂຸ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເຂົ້າສູ່ຣະແວກບ້ານ ເດີນທາງໄປຕາມຖະໜົນກໍສັງລວມ ບໍ່ຍ່າງ ແນມເບິ່ງຊ້າງ ບໍ່ແນມເບິ່ງມ້າ ບໍ່ແນມເບິ່ງລົດ ບໍ່ແນມເບິ່ງພົນຍ່າງ ບໍ່ແນມເບິ່ງເດັກຊາຍ ບໍ່ແນມເບິ່ງເດັກຍິງ ບໍ່ແນມເບິ່ງສະຕີ ບໍ່ແນມເບິ່ງບຸຣຸດ ບໍ່ແນມເບິ່ງຮ້ານຕະຫຼາດ ບໍ່ແນມເບິ່ງໜ້າມຸກເຮືອນ ບໍ່ແນມເບິ່ງສູງ ບໍ່ແນມເບິ່ງຕໍ່າ ບໍ່ແນມເບິ່ງທິດນ້ອຍທິດໃຫຍ່ ພິກຂຸຊື່ວ່າເປັນຜູ້ບໍ່ສອດສ່າຍຈັກຂຸ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເຫັນຮູບທາງຕາແລ້ວ ບໍ່ຮວບຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ຈະເປັນເຫດໃຫ້ບາບອະກຸສົນທໍາ ຄື ອະພິດຊາແລະໂທມະນັດຄອບງໍາໄດ້ ຍ່ອມຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ພິກຂຸຊື່ວ່າເປັນຜູ້ບໍ່ສອດສ່າຍຈັກຂຸ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເປັນຜູ້ງົດເວັ້ນຈາກການຂວນຂວາຍເບິ່ງການລະຫຼິ້ນອັນເປັນຂ້າເສິກແກ່ກຸສົນເຫັນປານນີ້ ເໝືອນສະມະນະພາມຜູ້ຈະເລີນບາງພວກບໍຣິໂພກອາຫານທີ່ເຂົາໃຫ້ ດ້ວຍສັດທາແລ້ວ ກໍບໍ່ຂວນຂວາຍເບິ່ງການລະຫຼິ້ນອັນເປັນຂ້າເສິກແກ່ກຸສົນເຫັນປານນີ້ຢູ່ ຄື ການຟ້ອນ ການຂັບຮ້ອງ ການເສບດົນຕີ ໆລໆ ການຈັດກະບວນທັບ ພິກຂຸຊື່ວ່າເປັນຜູ້ບໍ່ສອດສ່າຍຈັກຂຸ ເປັນແນວນີ້ແດ່ ລວມຄວາມວ່າ ເປັນຜູ້ບໍ່ສອດສ່າຍຈັກຂຸ

## ວ່າດ້ວຍຜູ້ມີຕີນຢູ່ບໍ່ສຸກ

ຄໍາວ່າ ແລະບໍ່ເປັນຜູ້ມີຕີນຢູ່ບໍ່ສຸກ ມີອະທິບາຍວ່າ

ພິກຂຸເປັນຜູ້ມີຕີນຢູ່ບໍ່ສຸກ ເປັນແນວໃດ?

ຄື ພິກຂຸບາງອົງໃນທໍາວິໄນນີ້ ເປັນຜູ້ມີຕີນຢູ່ບໍ່ສຸກ ຄື ປະກອບດ້ວຍຄວາມເປັນຜູ້ມີຕີນຢູ່ບໍ່ສຸກ ຈຶ່ງເປັນຜູ້ຂວນຂວາຍໃນການທ່ຽວໄປດົນນານ ຫຼືການທ່ຽວໄປບໍ່ມີຈຸດໝາຍຈາກອາຮາມໜຶ່ງໄປສູ່ອີກອາຮາມໜຶ່ງ ຈາກອຸທະຍານໜຶ່ງໄປສູ່ອີກອຸທະຍານໜຶ່ງ ຈາກນິຄົມໜຶ່ງໄປສູ່ອີກນິຄົມໜຶ່ງ ຈາກນະຄອນໜຶ່ງໄປສູ່ອີກນະຄອນໜຶ່ງ ຈາກຣັດໜຶ່ງໄປສູ່ອີກຣັດໜຶ່ງ ຈາກຊົນນະບົດໜຶ່ງໄປສູ່ອີກຊົນນະບົດໜຶ່ງ ພິກຂຸຊື່ວ່າເປັນຜູ້ມີຕີນຢູ່ບໍ່ສຸກ ເປັນແນວນີ້ແດ່

ອີກໄນໜຶ່ງ ພິກຂຸເປັນຜູ້ມີຕີນຢູ່ບໍ່ສຸກ ຄື ປະກອບດ້ວຍຄວາມເປັນຜູ້ມີຕີນຢູ່ບໍ່ສຸກໃນສັງຄາຮາມ ບໍ່ແມ່ນຍ້ອນເຫດແຫ່ງປະໂຫຍດ ບໍ່ແມ່ນຍ້ອນເຫດແຫ່ງການກະທໍາ ແຕ່ເປັນຜູ້ຟຸ້ງຊ່ານມີຈິດບໍ່ສະງົບ ຍ່າງຈາກບໍລິເວນໜຶ່ງໄປສູ່ອີກບໍລິເວນໜຶ່ງ ຈາກວິຫານໜຶ່ງ ໄປສູ່ອີກວິຫານໜຶ່ງ

ຈາກເຮືອນຫຼັງຄາດ້ານດຽວແຫ່ງໜຶ່ງ ໄປສູ່ເຮືອນຫຼັງດ້ານດຽວອີກແຫ່ງໜຶ່ງ ຈາກຜາສາດໜຶ່ງໄປສູ່ອີກຜາສາດໜຶ່ງ ຈາກເຮືອນໂລ້ນຫຼັງໜຶ່ງໄປສູ່ເຮືອນໂລ້ນອີກຫຼັງໜຶ່ງ ຈາກຖ້ຳໜຶ່ງໄປສູ່ອີກຖ້ຳໜຶ່ງ ຈາກບ່ອນຫຼົບຫຼີກແຫ່ງໜຶ່ງໄປສູ່ບ່ອນຫຼົບຫຼີກອີກແຫ່ງໜຶ່ງ ຈາກກຸດຕິໜຶ່ງໄປສູ່ອີກກຸດຕິໜຶ່ງ ຈາກເຮືອນຍອດແຫ່ງໜຶ່ງໄປສູ່ເຮືອນຍອດອີກແຫ່ງໜຶ່ງ ຈາກປ້ອມໜຶ່ງໄປສູ່ອີກປ້ອມໜຶ່ງ ຈາກຜາມໜຶ່ງໄປສູ່ອີກຜາມໜຶ່ງ ຈາກເຮືອນບ່ອນພັກແຫ່ງໜຶ່ງໄປສູ່ເຮືອນບ່ອນພັກອີກແຫ່ງໜຶ່ງ ຈາກໂຮງເກັບຂອງແຫ່ງໜຶ່ງໄປສູ່ໂຮງເກັບຂອງອີກແຫ່ງໜຶ່ງ ຈາກໂຮງສັນແຫ່ງໜຶ່ງໄປສູ່ໂຮງສັນອີກແຫ່ງໜຶ່ງ ຈາກໂຮງມົນແຫ່ງໜຶ່ງໄປສູ່ໂຮງມົນອີກແຫ່ງໜຶ່ງ ຈາກເຫງົ້າຕົ້ນໄມ້ແຫ່ງໜຶ່ງໄປສູ່ເຫງົ້າຕົ້ນໄມ້ອີກແຫ່ງໜຶ່ງ ຍ່າງໄປທີ່ທີ່ພວກພິກຂຸນັ່ງກັນຢູ່ ເປັນທີ ໒ ຂອງພິກຂຸ ໑ ອົງ ເປັນທີ ໓ ຂອງພິກຂຸ ໒ ອົງ ຫຼືເປັນທີ ໔ ຂອງພິກຂຸ ໓ ອົງໃນບ່ອນນັ້ນ ເວົ້າເລື້ອງເພີ້ເຈີ້ທັງຫຼາຍໃນບ່ອນນັ້ນ ຄື ເລື້ອງພຣະຣາຊາ ເລື້ອງໂຈນ ຯລຯ ເລື້ອງຄວາມຈະເລີນແລະຄວາມເສື່ອມ ພິກຂຸຊື່ວ່າເປັນຜູ້ມີຕີນຢູ່ບໍ່ສຸກ ເປັນແນວນີ້ແດ່

ຄຳວ່າ ແລະບໍ່ເປັນຜູ້ມີຕີນຢູ່ບໍ່ສຸກ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນເປັນ ຜູ້ງົດງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບຄວາມເປັນຜູ້ມີຕີນຢູ່ບໍ່ສຸກ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ໄດ້ແກ່ ເປັນຜູ້ພໍໃຈໃນຄວາມຫຼົບຫຼີກ ຍິນດີໃນຄວາມຫຼົບຫຼີກ ໝັ່ນປະກອບຄວາມສະຫງົບແຫ່ງຈິດພາຍໃນ ບໍ່ຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນການຢູ່ໃນເຮືອນວ່າງ ມີຊານ ເປັນຜູ້ຍິນດີໃນຊານ ຂວນຂວາຍໃນຄວາມເປັນຜູ້ມີຈິດມີອາລົມໜຶ່ງດຽວ ໜັກໃນປະໂຫຍດຂອງຕົນ ລວມຄວາມວ່າ ເປັນຜູ້ບໍ່ສອດສ່າຍຈັກຂຸ ແລະບໍ່ເປັນຜູ້ມີຕີນຢູ່ບໍ່ສຸກ

ຄຳວ່າ ຄຸ້ມຄອງອິນຊີ ໃນຄຳວ່າ ຄຸ້ມຄອງອິນຊີ ຮັກສາໃຈໄດ້ແລ້ວ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນເຫັນຮູບທາງຕາແລ້ວ ບໍ່ຮວບຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາແລະໂທມະນັດຄອບງຳເອົາໄດ້ ຍ່ອມຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະ ທາງກາຍ ຯລຯ ຮູ້ທຳມາຣົມທາງໃຈແລ້ວກໍບໍ່ຮວບຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາແລະໂທມະນັດຄອບງຳເອົາໄດ້ ຍ່ອມຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ລວມຄວາມວ່າ ຄຸ້ມຄອງອິນຊີ

ຄຳວ່າ ຮັກສາໃຈໄດ້ແລ້ວ ໄດ້ແກ່ ຄຸ້ມຄອງໃຈ ຊື່ວ່າຮັກສາຈິດໄດ້ແລ້ວ ລວມຄວາມວ່າ ຄຸ້ມຄອງອິນຊີ ຮັກສາໃຈໄດ້ແລ້ວ

ຄຳວ່າ ບໍ່ຊຸ່ມດ້ວຍກິເລດ ໃນຄຳວ່າ ບໍ່ຊຸ່ມດ້ວຍກິເລດ ໄຟກິເລດບໍ່ໄດ້ເຜົາ ອະທິບາຍວ່າ ສົມຈິງດັ່ງທີ່ທ່ານພຣະມະຫາໂມກຄັນລານະໄດ້ກ່າວໄວ້ວ່າ ຜູ້ມີອາຍຸທັງຫຼາຍ ເຮົາຈັກສະແດງອະວັດຕະສູດປະຣິຍາຍະສູດ ແລະອະນະວັດະສູດປະຣິຍາຍະສູດແກ່ທ່ານທັງຫຼາຍ ຂໍທ່ານທັງ

ຫຼາຍຈົ່ງຟັງເທດສະໜານັ້ນ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນຮັບຄຳຂອງທ່ານພຣະມະຫາໂມກຄັນລານະວ່າ ແນວນັ້ນ ທ່ານຜູ້ມີອາຍຸ ທ່ານພຣະມະຫາໂມກຄັນລານະໄດ້ກ່າວວ່າ

ຜູ້ມີອາຍຸທັງຫຼາຍ ພິກຂຸເປັນຜູ້ຊຸ່ມດ້ວຍກິເລດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວ ຍ່ອມຍິນດີໃນຮູບທີ່ໜ້າຮັກ ຍ່ອມຍິນຮ້າຍໃນຮູບທີ່ບໍ່ໜ້າຮັກ ເປັນຜູ້ບໍ່ຕັ້ງໝັ້ນກາຍະຄະຕາສະຕິ ມີປະຣິດຕະຈິດຢູ່ ແລະບໍ່ຮູ້ແຈ້ງເຈໂຕວິມຸດຕິ

ແລະປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນບ່ອນດັບໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນ ເຫຼົ່ານັ້ນທີ່ເກີດຂຶ້ນແລ້ວແກ່ທ່ານ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຮູ້ທຳມາຣົມທາງໃຈແລ້ວ ຍ່ອມຍິນດີໃນທຳມາຣົມທີ່ໜ້າຮັກ ຍ່ອມຍິນຮ້າຍໃນທຳມາຣົມທີ່ບໍ່ໜ້າຮັກ ເປັນຜູ້ບໍ່ຕັ້ງໝັ້ນກາຍະຄະຕາສະຕິ ມີປະຣິດຕະຈິດຢູ່ ແລະບໍ່ຮູ້ແຈ້ງເຈໂຕວິມຸດຕິ ແລະປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນບ່ອນດັບໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນ ທີ່ເກີດຂຶ້ນແລ້ວແກ່ທ່ານ ຜູ້ມີອາຍຸທັງຫຼາຍ ພິກຂຸນີ້ຮຽກວ່າ ເປັນຜູ້ຊຸ່ມດ້ວຍກິເລດໃນຮູບທີ່ເພິ່ງຮູ້ແຈ້ງທາງຕາ ຯລຯ ໃນສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ ໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ

ຜູ້ມີອາຍຸທັງຫຼາຍ ຖ້າແມ່ນມານເຂົ້າມາຫາພິກຂຸນັ້ນ ຜູ້ມີປົກກະຕິຢູ່ແນວນີ້ທາງຕາ ມານກໍເພິ່ງໄດ້ໂອກາດ ໄດ້ອາລົມ ຖ້າແມ່ນມານເຂົ້າມາຫາພິກຂຸນັ້ນທາງຫູ ຯລຯ ຖ້າແມ່ນມານເຂົ້າມາຫາພິກຂຸນັ້ນທາງໃຈ ມານກໍເພິ່ງໄດ້ໂອກາດ ໄດ້ອາລົມ ເຮືອນທີ່ສ້າງດ້ວຍໄມ້ອໍ້ ຫຼືເຮືອນທີ່ສ້າງດ້ວຍຫຍ້າແຫ້ງກອບ ຝົນຮົ່ວຮົດໄດ້ ຖ້າແມ່ນຄົນເອົາທອນໄຟທີ່ຕິດໄຟເຂົ້າໄປຈູດເຮືອນນັ້ນທາງທິດຕາເວັນອອກ ໄຟກໍເພິ່ງໄດ້ໂອກາດ ໄດ້ເຊື້ອ ຖ້າແມ່ນຄົນເອົາທອນໄຟທີ່ຕິດໄຟເຂົ້າໄປຈູດເຮືອນນັ້ນທາງທິດຕາເວັນຕົກ ຯລຯ ທາງທິດເໜືອ ຯລຯ ທາງທິດໃຕ້ ຯລຯ ທາງເບື້ອງຕ່ຳ ຯລຯ ທາງທິດເບື້ອງເທິງ ຯລຯ ຖ້າແມ່ນຄົນເອົາທອນໄຟ ທີ່ຕິດໄຟເຂົ້າໄປຈູດເຮືອນນັ້ນທາງທິດໃດ ໆ ກໍຕາມ ໄຟກໍເພິ່ງໄດ້ໂອກາດ ໄດ້ເຊື້ອ ແມ່ນສັນໃດ ຂໍ້ນີ້ກໍສັນນັ້ນຄືກັນ ຖ້າແມ່ນມານເຂົ້າໄປຫາພິກຂຸນັ້ນ ຜູ້ມີປົກກະຕິຢູ່ແນວນັ້ນທາງຕາ ມານກໍເພິ່ງໄດ້ໂອກາດ ໄດ້ອາລົມ ຖ້າແມ່ນເຂົ້າໄປຫາພິກຂຸນັ້ນທາງຫູ ຯລຯ ມານເຂົ້າໄປຫາພິກຂຸນັ້ນທາງໃຈ ມານກໍເພິ່ງໄດ້ໂອກາດ ໄດ້ອາລົມຮູບຄອບງຳພິກຂຸຜູ້ມີປົກກະຕິຢູ່ແນວນີ້ໄດ້ ພິກຂຸບໍ່ຄອບງຳຮູບໄດ້ ສຽງຄອບງຳພິກຂຸໄດ້ພິກຂຸບໍ່ຄອບງຳສຽງໄດ້ ກິ່ນຄອບງຳພິກຂຸໄດ້ ພິກຂຸບໍ່ຄອບງຳກິ່ນໄດ້ ຣົດຄອບງຳພິກຂຸໄດ້ ພິກຂຸບໍ່ຄອບງຳຣົດໄດ້ ໂຜດຖັບພະຄອບງຳພິກຂຸໄດ້ ພິກຂຸບໍ່ຄອບງຳໂຜດຖັບພະໄດ້ ທຳມາຣົມຄອບງຳພິກຂຸໄດ້ ພິກຂຸບໍ່ຄອບງຳທຳມາຣົມໄດ້

ພິກຂຸນີ້ຮຽກວ່າ ເປັນຜູ້ຖືກຄອບງຳ ຄືຖືກຮູບຄອບງຳ ຖືກສຽງຄອບງຳ ຖືກກິ່ນຄອບງຳຖືກຣົດຄອບງຳ ຖືກໂຜດຖັບພະຄອບງຳ ແລະຖືກທຳມາຣົມຄອບງຳ (ຖືກກິເລດເຫຼົ່ານັ້ນຄອບງຳ) ທຳທີ່ເປັນບາບອະກຸສົນອັນເປັນເຫດໃຫ້ເສົ້າໝອງ ເຮັດໃຫ້ເກີດໃນພົບໃໝ່ ມີຄວາມກະວົນກະ

ວາຍ ມີທຸກເປັນວິບາກ ເປັນບ່ອນຕັ້ງຊາດ ຊະຣາ ແລະມໍຣະນະຕໍ່ໄປຄອບງຳທ່ານແລ້ວ ພິກຂຸເປັນຜູ້ຊຸ່ມດ້ວຍກິເລດ ເປັນແນວນີ້ແລ

ພິກຂຸເປັນຜູ້ບໍ່ຊຸ່ມດ້ວຍກິເລດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວ ບໍ່ຍິນດີໃນຮູບທີ່ໜ້າຮັກ ບໍ່ຍິນຮ້າຍ

ໃນຮູບທີ່ບໍ່ເປັນທີ່ຮັກ ເປັນຜູ້ຕັ້ງໝັ້ນກາຍະຄະຕາສະຕິ ມີອັບປະມານະຈິດຢູ່ ແລະຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນບ່ອນດັບໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ເກີດຂຶ້ນແລ້ວແກ່ທ່ານ ຟັງສຽງທາງຫູ ຯລຯ ຮູ້ທຳມາຣົມທາງໃຈແລ້ວ ບໍ່ຍິນດີໃນທຳມາຣົມອັນໜ້າຮັກ ບໍ່ຍິນຮ້າຍໃນທຳມາຣົມທີ່ບໍ່ໜ້າຮັກ ເປັນຜູ້ຕັ້ງໝັ້ນກາຍະຄະຕາສະຕິ ແລະມີອັບປະມານະຈິດຢູ່ ແລະຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນບ່ອນດັບໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ເກີດຂຶ້ນແກ່ທ່ານ ພິກຂຸນີ້ຮຽກວ່າ ເປັນຜູ້ບໍ່ຊຸ່ມດ້ວຍກິເລດໃນຮູບທີ່ເພິ່ງຮູ້ແຈ້ງທາງຕາຯລຯ ເປັນຜູ້ບໍ່ຊຸ່ມດ້ວຍກິເລດໃນສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ ເປັນຜູ້ບໍ່ຊຸ່ມດ້ວຍກິເລດໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ແມ່ນຖ້າມານເຂົ້າມາຫາພິກຂຸນັ້ນ ຜູ້ມີປົກກະຕິຢູ່ແນວນັ້ນທາງຕາ ມານກໍບໍ່ເພິ່ງໄດ້ໂອກາດ ບໍ່ເພິ່ງໄດ້ອາລົມ ຖ້າແມ່ນມານເຂົ້າມາຫາພິກຂຸນັ້ນທາງຫູ ຯລຯ ຖ້າແມ່ນມານເຂົ້າມາຫາພິກຂຸນັ້ນທາງໃຈ ມານກໍບໍ່ເພິ່ງໄດ້ໂອກາດ ບໍ່ເພິ່ງໄດ້ອາລົມ

ກູຕາຄາຣະ ກູຕາຄາຣະສາລາ ຫຼື ຄາຣະສາລາ ພອກດິນໜາ ມີເຄື່ອງສາບທາປຽກ ຖ້າແມ່ນຄົນເອົາທວນໄຟຫຍ້າທີ່ຕິດໄຟ ເຂົ້າໄປຈູດເຮືອນນັ້ນທາງທິດຕາເວັນອອກ ໄຟກໍບໍ່ເພິ່ງໄດ້ໂອກາດ ບໍ່ເພິ່ງໄດ້ເຊື້ອ ຖ້າແມ່ນຄົນເອົາທວນໄຟຫຍ້າທີ່ຕິດໄຟ ເຂົ້າໄປຈູດເຮືອນນັ້ນທາງທິດຕາເວັນຕົກ ຯລຯ ທາງທິດເໜືອ ຯລຯ ທາງທິດໃຕ້ ຯລຯ ທາງທິດເບື້ອງຕ່ຳ ຯລຯ ທາງທິດເບື້ອງເທິງ ຯລຯ ຖ້າແມ່ນຄົນເອົາທວນໄຟຫຍ້າທີ່ຕິດໄຟ ເຂົ້າໄປຈູດເຮືອນນັ້ນທາງທິດໃດ ໆ ກໍຕາມ ໄຟກໍບໍ່ເພິ່ງໄດ້ໂອກາດ ບໍ່ເພິ່ງໄດ້ເຊື້ອ ແມ່ນສັນໃດ

ຂໍ້ນີ້ກໍສັນນັ້ນຄືກັນ ຖ້າແມ່ນມານເຂົ້າມາຫາພິກຂຸນັ້ນ ຜູ້ມີປົກກະຕິຢູ່ແນວນັ້ນທາງຕາ ມານກໍບໍ່ເພິ່ງໄດ້ໂອກາດ ບໍ່ເພິ່ງໄດ້ອາລົມ ຖ້າແມ່ນມານເຂົ້າມາຫາພິກຂຸນັ້ນທາງຫູ ຯລຯ ຖ້າແມ່ນມານເຂົ້າມາຫາພິກຂຸນັ້ນທາງໃຈ ມານກໍບໍ່ເພິ່ງໄດ້ໂອກາດ ບໍ່ເພິ່ງໄດ້ອາລົມ ພິກຂຸຜູ້ມີປົກກະຕິຢູ່ແນວນີ້ ຄອບງຳຮູບໄດ້ ຮູບຄອບງຳພິກຂຸບໍ່ໄດ້ ພິກຂຸຄອບງຳສຽງໄດ້ ສຽງຄອບງຳພິກຂຸບໍ່ໄດ້ ຯລຯ ພິກຂຸຄອບງຳທຳມາຣົມໄດ້ ທຳມາຣົມຄອບງຳພິກຂຸບໍ່ໄດ້

ພິກຂຸນີ້ຮຽກວ່າເປັນຜູ້ຄອບງຳ ຄື ຄອບງຳຮູບໄດ້ ຄອບງຳສຽງໄດ້ ຄອບງຳກິ່ນໄດ້ ຄອບງຳຣົດໄດ້ ຄອບງຳໂຜດຖັບພະໄດ້ ຄອບງຳທຳມາຣົມໄດ້ (ບໍ່ຖືກກິເລດເຫຼົ່ານັ້ນຄອບງຳ) ທ່ານຄອບງຳທຳທີ່ເປັນບາບອະກຸສົນອັນເປັນເຫດໃຫ້ເສົ້າໝອງ ເຮັດໃຫ້ເກີດໃນພົບໃໝ່ອີກ ມີຄວາມ

ກະວົນກະວາຍ ມີທຸກເປັນວິບາກ ເປັນບ່ອນຕັ້ງແຫ່ງຊາດ ຊະຣາ ແລະມໍຣະນະຕໍ່ໄປໄດ້ແລ້ວ ຜູ້ມີອາຍຸທັງຫຼາຍ ພິກຂຸເປັນຜູ້ບໍ່ຊຸ່ມດ້ວຍກິເລດ ເປັນແນວນີ້ແລ ລວມຄວາມວ່າ ບໍ່ຊຸ່ມດ້ວຍກິເລດ

ຄຳວ່າ ໄຟກິເລດບໍ່ໄດ້ເຜົາ ອະທິບາຍວ່າ ໄຟ ຄື ຣາຄະ ໄຟ ຄື ໂທສະ ໄຟ ຄື ໂມຫະ ແຜດເຜົາບໍ່ໄດ້ ລວມຄວາມວ່າ ບໍ່ຊຸ່ມດ້ວຍກິເລດ ໄຟກິເລດບໍ່ໄດ້ເຜົາ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ພິກຂຸເປັນຜູ້ບໍ່ສອດສ່າຍຈັກຂຸ
ແລະບໍ່ເປັນຜູ້ມີຕີນຢູ່ບໍ່ສຸກ ຄຸ້ມຄອງອິນຊີ
ຮັກສາໃຈໄດ້ແລ້ວ ບໍ່ຊຸ່ມດ້ວຍກິເລດ ໄຟກິເລດບໍ່ໄດ້ເຜົາ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໕໐] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

(ພຣະປັດເຈກສຳພຸດທະເຈົ້າ) ປົງເຄື່ອງໝາຍຄະລືຫັດແລ້ວ
ຄອງຜ້າກາສະວະ ອອກບວດ ເໝືອນຕົ້ນທອງຫຼາງມີໃບທຶບ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໑໐)

ຄຳວ່າ ປົງເຄື່ອງໝາຍຄະລືຫັດແລ້ວ ອະທິບາຍວ່າ ຜົມໜວດຯລຯ ຜ້າຊາຍຍາວ ຮຽກວ່າ ເຄື່ອງໝາຍຄະລືຫັດ

ຄຳວ່າ ປົງເຄື່ອງໝາຍຄະລືຫັດແລ້ວ ອະທິບາຍວ່າ ປົງ ຄື ປົງລົງ ຖິ້ມ ຣະງັບເຄື່ອງໝາຍຄະລືຫັດແລ້ວ ລວມຄວາມວ່າ ປົງເຄື່ອງໝາຍຄະລືຫັດແລ້ວ

ຄຳວ່າ ເໝືອນຕົ້ນທອງຫຼາງມີໃບທຶບ ອະທິບາຍວ່າ ຕົ້ນປາຣິສັດ ຄື ຕົ້ນທອງຫຼາງນັ້ນ ມີໃບໜາແໜ້ນ ມີຮົ່ມເງົາຊິດ ສັນໃດ ພຣະປັດເຈກສຳພຸດທະເຈົ້ານັ້ນ ກໍຊົງບາດແລະຈີວອນຄົບ ສັນນັ້ນ ລວມຄວາມວ່າ ເໝືອນຕົ້ນທອງຫຼາງມີໃບທຶບ

ຄຳວ່າ ຄອງຜ້າກາສະວະ ອອກບວດ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນຕັດຄວາມກັງວົນໃນການຄອງເຮືອນ ຄວາມກັງວົນດ້ວຍບຸດພັນລະຍາ ຄວາມກັງວົນດ້ວຍຍາດພີ່ນ້ອງ ຄວາມກັງວົນດ້ວຍມິດ ແລະອຳມາດ ຄວາມກັງວົນດ້ວຍການສະສົມ ແຖຜົມແລະ ໜວດ ນຸ່ງຫົ່ມຜ້າກາສະວະ ອອກບວດຈາກເຮືອນເປັນບັນພະຊິດ ເຂົ້າເຖິງຄວາມເປັນຜູ້ບໍ່ມີຄວາມກັງວົນ ປະພຶດ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປຜູ້ດຽວ ລວມຄວາມວ່າ ຄອງຜ້າກາສະວະ ອອກບວດ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້າຈຶ່ງກ່າວວ່າ

(พระปัดเจกสำพุดทะเจ้า) ปົງເຄື່ອງໝາຍຄະລືຫັດແລ້ວ
ຄອງຜ້າກາສະວະ ອອກບວດ ເໝືອນຕົ້ນທອງຫຼາງມີໃບທຶບ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໕໑] (พระปัดเจกสำพุดทะเจ้ากล่าวว่า)

(พระปัดเจกสำพุดทะเจ้า) ບໍ່ເຮັດຄວາມຍິນດີໃນຣົດ
ບໍ່ໂລເລ ຜູ້ທີ່ບໍ່ຕ້ອງລ້ຽງຄົນອື່ນ
ທ່ຽວບິນທະບາດຕາມລຳດັບຮ່ອມ
ມີໃຈບໍ່ຜູກພັນໃນຕະກູນຕ່າງ ໆ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໑໑)

## ວ່າດ້ວຍຣົດ

ຄຳວ່າ ບໍ່ເຮັດຄວາມຍິນດີໃນຣົດ ບໍ່ໂລເລ ອະທິບາຍວ່າ

ຄຳວ່າ ຣົດ ໄດ້ແກ່ ຣົດຈາກຮາກ ຣົດຈາກລຳຕົ້ນ ຣົດຈາກເປືອກ ຣົດຈາກໃບ ຣົດຈາກດອກ ຣົດຈາກໝາກ ຣົດສົ້ມ ຣົດຫວານ ຣົດຂົມ ຣົດເຜັດ ຣົດເຄັມ ຣົດຮືນ ຣົດເຝື່ອນ ຣົດຝາດ ຣົດແຊບ ຣົດບໍ່ແຊບ ຂອງເຢັນ ຂອງຮ້ອນ ສະມະນະພາມບາງພວກຍິນດີໃນຣົດ ສະມະນະພາມເຫຼົ່ານັ້ນທ່ຽວສະແຫວງຫາຣົດເລີດດ້ວຍປາຍລີ້ນ ໄດ້ຣົດສົ້ມແລ້ວກໍສະແຫວງຫາຣົດບໍ່ສົ້ມ ໄດ້ຣົດບໍ່ສົ້ມແລ້ວກໍສະແຫວງຫາຣົດສົ້ມ ໄດ້ຣົດຫວານແລ້ວກໍສະແຫວງຫາຣົດບໍ່ຫວານ ໄດ້ຣົດບໍ່ຫວານແລ້ວກໍສະແຫວງຫາຣົດ ຫວານ ໄດ້ຣົດຂົມແລ້ວກໍສະແຫວງຫາຣົດບໍ່ຂົມ ໄດ້ຣົດບໍ່ຂົມແລ້ວກໍສະແຫວງຫາຣົດຂົມ ໄດ້ຣົດເຜັດແລ້ວກໍສະແຫວງຫາຣົດບໍ່ເຜັດ ໄດ້ຣົດບໍ່ເຜັດແລ້ວກໍສະແຫວງຫາຣົດເຜັດ ໄດ້ຣົດເຄັມແລ້ວກໍສະແຫວງຫາຣົດ ບໍ່ເຄັມ ໄດ້ຣົດບໍ່ເຄັມແລ້ວກໍສະແຫວງຫາຣົດເຄັມ ໄດ້ຣົດຮືນແລ້ວກໍສະແຫວງຫາຣົດບໍ່ຮືນ ໄດ້ຣົດບໍ່ຮືນແລ້ວກໍສະແຫວງຫາຣົດຮືນ ໄດ້ຣົດຝາດແລ້ວກໍສະແຫວງຫາຣົດບໍ່ຝາດ ໄດ້ຣົດບໍ່ຝາດແລ້ວກໍສະແຫວງຫາຣົດຝາດ ໄດ້ຣົດເຝື່ອນແລ້ວກໍສະແຫວງຫາຣົດບໍ່ເຝື່ອນ ໄດ້ຣົດບໍ່ເຝື່ອນແລ້ວກໍສະແຫວງຫາຣົດເຝື່ອນ ໄດ້ຣົດແຊບແລ້ວກໍສະແຫວງຫາຣົດບໍ່ແຊບ ໄດ້ຣົດບໍ່ແຊບແລ້ວກໍສະແຫວງຫາຣົດແຊບ ໄດ້ຂອງເຢັນແລ້ວກໍສະແຫວງຫາຂອງຮ້ອນ ໄດ້ຂອງຮ້ອນແລ້ວກໍສະແຫວງຫາຂອງເຢັນ ສະມະນະພາມ ເຫຼົ່ານັ້ນໄດ້ຣົດໃດ ໆ ແລ້ວກໍບໍ່ຍິນດີດ້ວຍຣົດນັ້ນ ໆ ຍັງສະແຫວງຫາຣົດອື່ນ ໆ ຕໍ່ໄປອີກ ເປັນຜູ້ກຳໜັດ ຍິນດີ ຕິດໃຈ ສະຍົບ ມົກມຸ່ນ ເກາະຕິດ ກ່ຽວພັນ ພົວພັນໃນຣົດທີ່ພໍໃຈ

ຕັນຫາໃນຣົດນີ້ພຣະປັດເຈກສຳພຸດທະເຈົ້ານັ້ນລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ດັ່ງນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນພິຈາລະນາແລ້ວໂດຍແຍບຄາຍ ຈຶ່ງສັນອາຫານບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອມົວເມົາ ບໍ່ແມ່ນເພື່ອຕົບແຕ່ງ ບໍ່ແມ່ນເພື່ອປະດັບ ແຕ່ເຮົາສັນພຽງເພື່ອຈະໃຫ້ຮ່າງກາຍນີ້ດຳຣົງຢູ່ ເພື່ອໃຫ້ຮ່າງກາຍນີ້ດຳເນີນໄປໄດ້ ເພື່ອຣະງັບຄວາມລຳບາກ ເພື່ອອະນຸເຄາະພົມມະຈັນຢ່າງດຽວເທົ່ານັ້ນ ດ້ວຍມະນະສິການວ່າ ເຮົາຈັກບຳບັດເວທະນາເກົ່າ ບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ການດຳເນີນຊີວິດຂອງເຮົາ ຄວາມບໍ່ມີໂທດແລະຢູ່ສະບາຍໄດ້ດ້ວຍວິທີການແນວນີ້

ຄົນທາບາດພຽງເພື່ອປູກເນື້ອເຍື່ອ ຕ້ອງການເພົາພຽງເພື່ອຈະຂົນພາຣະໄປ ຫຼືກິນອາຫານທີ່ປຸງຈາກຊີ້ນບຸດ ພຽງເພື່ອຈະເດີນທາງອອກຈາກທາງກັນດານໃຫ້ພົ້ນເທົ່ານັ້ນ ສັນໃດພຣະປັດເຈກສຳພຸດທະເຈົ້າກໍສັນນັ້ນຄືກັນ ພິຈາລະນາໂດຍແຍບຄາຍແລ້ວ ສັນອາຫານບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອມົວເມົາ ບໍ່ແມ່ນເພື່ອຕົບແຕ່ງ ບໍ່ແມ່ນເພື່ອປະດັບ ແຕ່ສັນພຽງເພື່ອຈະໃຫ້ຮ່າງກາຍນີ້ດຳຣົງຢູ່ ເພື່ອໃຫ້ຮ່າງກາຍນີ້ດຳເນີນໄປໄດ້ ເພື່ອຣະງັບຄວາມລຳບາກ ເພື່ອອະນຸເຄາະພົມມະຈັນເທົ່ານັ້ນ ດ້ວຍມະນະສິການວ່າ ເຮົາຈັກບຳບັດເວທະນາເກົ່າ ບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ການດຳເນີນຊີວິດຂອງເຮົາ ຄວາມບໍ່ມີໂທດແລະຢູ່ສະບາຍໄດ້ດ້ວຍວິທີການແນວນີ້ ເປັນຜູ້ງົດ ງົດເວັ້ນ ເວັ້ນຂາດ ອອກ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງກັບຕັນຫາໃນຣົດ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ລວມຄວາມວ່າ ບໍ່ເຮັດຄວາມຍິນດີໃນຣົດ

ຄຳວ່າ ບໍ່ໂລເລ ອະທິບາຍວ່າ ຕັນຫາ ຄື ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ ຮຽກວ່າ ຄວາມໂລເລ ຫຼື ຄວາມໂລບ ຕັນຫາ ຄື ຄວາມໂລເລ ຄວາມໂລບນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນລະໄດ້ເດັດຂາດແລ້ວ ຕັດຮາກກົ່ນເຫງົ້າເໝືອນຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ດັ່ງນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນ ຈຶ່ງຊື່ວ່າບໍ່ໂລເລ ລວມຄວາມວ່າ ບໍ່ເຮັດຄວາມຍິນດີໃນຣົດ ບໍ່ໂລເລ

ຄຳວ່າ ຜູ້ທີ່ບໍ່ຕ້ອງລ້ຽງຄົນອື່ນ ໃນຄຳວ່າ ຜູ້ທີ່ບໍ່ຕ້ອງລ້ຽງຄົນອື່ນ ທ່ຽວບິນທະບາດຕາມລຳດັບຮ່ອມ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນລ້ຽງແຕ່ຕົນເທົ່ານັ້ນ ບໍ່ລ້ຽງຄົນອື່ນ

ເຮົາຮຽກບຸກຄົນຜູ້ທີ່ບໍ່ຕ້ອງລ້ຽງຄົນອື່ນ
ຮູ້ຈັກຕົນຝຶກຝົນຕົນໄດ້ຕັ້ງໝັ້ນຢູ່
ໃນສາຣະທຳ ສິ້ນອາສະວະແລ້ວ
ບໍ່ມີຂໍ້ບົກຜ່ອງນັ້ນວ່າເປັນພານ

ລວມຄວາມວ່າ ຜູ້ທີ່ບໍ່ຕ້ອງລ້ຽງຄົນອື່ນ

ຄຳວ່າ ທ່ຽວບິນທະບາດຕາມລຳດັບຮ່ອມ ອະທິບາຍວ່າ ເວລາເຊົ້າພຣະປັດເຈກສຳພຸດທະເຈົ້ານັ້ນ ຄອງຜ້າແລ້ວ ຖືບາດຈີວອນເຂົ້າໝູ່ບ້ານ ຫຼືນິຄົມ ເພື່ອບິນທະບາດ ຮັກສາກາຍ ຮັກສາວາຈາ ຮັກສາຈິດແລ້ວ ຕັ້ງສະຕິ ສັງລວມອິນຊີ ມີຕາທອດລົງ ສົມບູນດ້ວຍອິລິຍາບົດ ເຂົ້າອອກຈາກຕະກູນໜຶ່ງໄປສູ່ຕະກູນໜຶ່ງ ທ່ຽວໄປເພື່ອບິນທະບາດ ລວມຄວາມວ່າ ຜູ້ທີ່ບໍ່ຕ້ອງລ້ຽງຄົນອື່ນ ທ່ຽວບິນທະບາດຕາມລຳດັບຮ່ອມ

ຄຳວ່າ ມີໃຈບໍ່ຜູກພັນໃນຕະກູນຕ່າງ ໆ ອະທິບາຍວ່າ ພິກຂຸມີໃຈຜູກພັນດ້ວຍເຫດ ๒ ຢ່າງ ຄື

໑. ເມື່ອວາງຕົນຕ່ຳວາງຜູ້ອື່ນສູງ ຊື່ວ່າ ມີໃຈຜູກພັນ
໒. ເມື່ອວາງຕົນສູງວາງຜູ້ອື່ນຕ່ຳ ຊື່ວ່າ ມີໃຈຜູກພັນ

ພິກຂຸເມື່ອວາງຕົນຕ່ຳວາງຜູ້ອື່ນສູງ ເປັນຜູ້ມີໃຈຜູກພັນ ເປັນແນວໃດ?

ຄື ພິກຂຸກ່າວວ່າ ພວກທ່ານມີອຸປະກາຣະຫຼາຍແກ່ອາດຕະມາພາບ ອາດຕະມາພາບອາໄສ ພວກທ່ານຈຶ່ງໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຄົນເຫຼົ່າອື່ນອາໄສພວກທ່ານ ເຫັນກັບພວກທ່ານ ຈຶ່ງເຂົ້າໃຈທີ່ຈະໃຫ້ ຫຼືຈະເຮັດແກ່ອາດຕະມາພາບ ຊື່ແລະສະກຸນເກົ່າຂອງມານດາບິດາຂອງອາດຕະມາພາບສູນຫາຍໄປຫມົດແລ້ວ ພວກທ່ານເຮັດໃຫ້ອາດຕະມາພາບ ເປັນທີ່ຮູ້ຈັກວ່າ ອາດຕະມາພາບ ເປັນພຣະປະຈຳຕະກູນຂອງອຸປາສົກນັ້ນ ເປັນພຣະປະຈຳຕະກູນຂອງອຸປາສິການັ້ນ ດັ່ງນີ້ ເມື່ອວາງຕົນຕ່ຳ ວາງຜູ້ອື່ນສູງ ຊື່ວ່າ ເປັນຜູ້ມີໃຈຜູກພັນ ເປັນແນວນີ້

ພິກຂຸເມື່ອວາງຕົນສູງວາງຜູ້ອື່ນຕ່ຳ ເປັນຜູ້ມີໃຈຜູກພັນ ເປັນແນວໃດ?

ຄື ພິກຂຸກ່າວວ່າ ອາດຕະມາພາບມີອຸປະກາຣະຫຼາຍແກ່ພວກທ່ານ ພວກທ່ານອາໄສອາດຕະມາພາບແລ້ວ ຈຶ່ງໄດ້ເຖິງພຣະພຸດທະເຈົ້າເປັນບ່ອນເພິ່ງ ເຖິງພຣະທຳເປັນບ່ອນເພິ່ງ ເຖິງພຣະສົງເປັນບ່ອນເພິ່ງ ເວັ້ນຂາດຈາກປານາຕິບາດ ອະທິນນາທານ ກາເມສຸມິດສາຈານະ ມຸສາວາດ ເວັ້ນຂາດຈາກສຸຣາເມໄຣອັນເປັນຂອງມຶນເມົາ ອັນເປັນບ່ອນຕັ້ງແຫ່ງຄວາມຜະໝາດ ອາດຕະມາພາບບອກອຸດເທດແດ່ ປະຣິປຸດສາແດ່ ອຸໂປສົດແດ່ ແກ່ພວກທ່ານ ອາດຕະມາພາບອະທິຖານນະວະກຳ ເມື່ອເປັນເຊັ່ນນັ້ນ ພວກທ່ານຍັງປະຖິ້ມອາດຕະມາພາບໄປສັກກາຣະເຄົາລົບ ນັບຖື ບູຊາຜູ້ອື່ນ ເມື່ອວາງຕົນສູງວາງຜູ້ອື່ນຕ່ຳ ຊື່ວ່າຜູ້ມີໃຈຜູກພັນ ເປັນແນວນີ້

ຄຳວ່າ ມີໃຈບໍ່ຜູກພັນໃນຕະກູນຕ່າງ ໆ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ມີໃຈບໍ່ຜູກພັນດ້ວຍກຸລະປະລິໂພດ (ຄວາມກັງວົນກ່ຽວກັບຕະກູນ) ຄະນະປະລິໂພດ (ຄວາມກັງວົນກ່ຽວກັບໝູ່ຄະນະ) ອາວາດປະລິໂພດ (ຄວາມກັງວົນກ່ຽວກັບອາວາດ) ຈີວອນປະລິໂພດ (ຄວາມກັງວົນ ກ່ຽວກັບຈີວອນ) ປິນດະປາຕະປະລິໂພດ (ຄວາມກັງວົນກ່ຽວກັບບິນທະບາດ) ເສນາສະນະປະລິໂພດ (ຄວາມກັງວົນກ່ຽວກັບເສນາສະນະ) ຄິລານະປັດໄຈເພສັດຊະປະຣິຂາຣະ

ປະລິໂພດ (ຄວາມກັງວົນກ່ຽວກັບຄິລານະປັດໄຈເພສັດບໍຣິຂານ) ລວມຄວາມວ່າ ມີໃຈບໍ່ຜູກພັນໃນຕະກູນຕ່າງ ໆ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

(ພຣະປັດເຈກສຳພຸດທະເຈົ້າ) ບໍ່ເຮັດຄວາມຍິນດີໃນຣົດ
ບໍ່ໂລເລ ຜູ້ທີ່ບໍ່ຕ້ອງລ້ຽງຄົນອື່ນ
ທ່ຽວບິນທະບາດຕາມລຳດັບຮ່ອມ
ມີໃຈບໍ່ຜູກພັນໃນຕະກູນຕ່າງ ໆ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

**ຕະຕິຍະວັກຈົບ**

## ຈະຕຸດຖະວັກ

[໑໕໘] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

(ພຣະປັດເຈກສຳພຸດທະເຈົ້າ) ລະນິວອນ ໕ ຢ່າງ
ກຳຈັດອຸປະກິເລດແຫ່ງຈິດທັງປວງໄດ້ແລ້ວ
ບໍ່ອີງອາໄສ ຕັດຄວາມຮັກແລະຄວາມຊັງໄດ້ແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໑)

### ວ່າດ້ວຍນິວອນ ໕

ຄຳວ່າ ລະນິວອນ ໕ ຢ່າງ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ລະ ຄື ລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງກາມສັນທະນິວອນ (ສິ່ງກັ້ນຈິດບໍ່ໃຫ້ກ້າວໜ້າໃນຄຸນນະທຳ ຄື ຄວາມພໍໃຈໃນກາມ) ພະຍາບາດນິວອນ (ສິ່ງກັ້ນຈິດບໍ່ໃຫ້ກ້າວໜ້າໃນຄຸນນະທຳ ຄື ຄວາມຄິດປອງຮ້າຍ) ฯລฯ ຖີນະມິດທະນິວອນ (ສິ່ງກັ້ນຈິດບໍ່ໃຫ້ກ້າວໜ້າໃນຄຸນນະທຳ ຄື ຄວາມທໍ້ຖອຍແລະເຊື່ອງຊຶມ) ฯລฯ ອຸດທັດຈະກຸກກຸຈຈະນິວອນ (ສິ່ງກັ້ນຈິດບໍ່ໃຫ້ກ້າວໜ້າໃນຄຸນນະທຳ ຄື ຄວາມຟຸ້ງຊ່ານແລະຮ້ອນໃຈ) ฯລฯ ວິຈິກິດສານິວອນ (ສິ່ງກັ້ນຈິດບໍ່ໃຫ້ກ້າວໜ້າໃນຄຸນນະທຳ ຄື ຄວາມລັງເລສົງໄສ) ສະຫງັດຈາກກາມ ສະຫງັດຈາກອະກຸສົນທຳແລ້ວ ບັນລຸປະຖົມຊານອັນມີວິຕົກ ມີວິຈານ ມີປີຕິສຸກອັນເກີດຈາກວິເວກຢູ່ ລວມຄວາມວ່າ ລະນິວອນ ໕ ຢ່າງ

ຄຳວ່າ ກຳຈັດອຸປະກິເລດແຫ່ງຈິດທັງປວງໄດ້ແລ້ວ ອະທິບາຍວ່າ ຣາຄະເປັນອຸປະກິເລດແຫ່ງຈິດ ໂທສະເປັນອຸປະກິເລດແຫ່ງຈິດ ໂມຫະເປັນອຸປະກິເລດແຫ່ງຈິດ ໂກທະເປັນອຸປະກິ

ເລດແຫ່ງຈິດ ຯລຯ ອຸປະນາຫະເປັນອຸປະກິເລດແຫ່ງຈິດ ຯລຯ ອະກຸສະລາພິສັງຂານທຸກປະເພດເປັນອຸປະກິເລດແຫ່ງຈິດ

ຄຳວ່າ ກຳຈັດອຸປະກິເລດແຫ່ງຈິດທັງປວງໄດ້ແລ້ວ ອະທິບາຍວ່າ ກຳຈັດ ຄື ກຳຈັດ ລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງອຸປະກິເລດແຫ່ງຈິດທັງໝົດໄດ້ແລ້ວ ລວມຄວາມວ່າ ກຳຈັດອຸປະກິເລດແຫ່ງຈິດທັງປວງໄດ້ແລ້ວ

ຄຳວ່າ ບໍ່ອິງອາໄສ ໃນຄຳວ່າ ບໍ່ອິງອາໄສ ຕັດຄວາມຮັກ ແລະຄວາມຊັງໄດ້ແລ້ວ ອະທິບາຍວ່າ ການອາໄສ ໒ ຢ່າງ ຄື (໑) ການອາໄສດ້ວຍອຳນາດຕັນຫາ (໒) ການອາໄສດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າ ການອາໄສດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າການອາໄສດ້ວຍອຳນາດທິດຖິ

ຄຳວ່າ ຄວາມຮັກ ໄດ້ແກ່ ຄວາມຮັກ ໒ ຢ່າງ ຄື (໑) ຄວາມຮັກດ້ວຍອຳນາດຕັນຫາ (໒) ຄວາມຮັກດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າຄວາມຮັກດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າຄວາມຮັກດ້ວຍອຳນາດທິດຖິ

## ວ່າດ້ວຍຄວາມຊັງ

ຄຳວ່າ ຄວາມຊັງ ໄດ້ແກ່ ໃຈປອງຮ້າຍ ມຸ້ງຮ້າຍ ຂັດເຄືອງ ຂຸ່ນເຄືອງ ເຄືອງ ເຄືອງຫຼາຍ ເຄືອງຕະຫຼອດ ຊັງ ຊິງຊັງ ກຽດຊັງ ໃຈພະຍາບາດ ໃຈແຄ້ນເຄືອງ ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມໂກດ ຄວາມແຄ້ນ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມບໍ່ແຊ່ມຊື່ນແຫ່ງຈິດເຫັນປານນີ້

ຄຳວ່າ ບໍ່ອິງອາໄສ ຕັດຄວາມຮັກ ແລະຄວາມຊັງໄດ້ແລ້ວ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນຕັດຄວາມຮັກດ້ວຍອຳນາດຕັນຫາ ຄວາມຮັກດ້ວຍອຳນາດທິດຖິ ແລະຄວາມຊັງໄດ້ແລ້ວ ຄື ຕັດຂາດ ຖອນຂຶ້ນ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ກໍບໍ່ອາໄສຕາ ບໍ່ອາໄສຫູ ຯລຯ ບໍ່ອາໄສຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ແລະ ໂຜດຖັບພະທີ່ໄດ້ຮັບຮູ້ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ຄື ບໍ່ຕິດແລ້ວ ບໍ່ຕິດແໜ້ນແລ້ວ ບໍ່ຕິດພັນແລ້ວ ບໍ່ຕິດໃຈແລ້ວ ໄດ້ແກ່ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງແລ້ວ ມີໃຈເປັນອິດສະຫຼະ (ຈາກກິເລດ)ຢູ່ ລວມຄວາມວ່າ ບໍ່ອິງອາໄສ ຕັດຄວາມຮັກແລະ ຄວາມຊັງໄດ້ແລ້ວ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້າຈຶ່ງກ່າວວ່າ

(ພຣະປັດເຈກສຳພຸດທະເຈົ້າ) ລະນິວອນ ໕ ຢ່າງ<br>
ກຳຈັດອຸປະກິເລດແຫ່ງຈິດທັງປວງໄດ້ແລ້ວ

ບໍ່ອີງອາໄສ ຕັດຄວາມຮັກແລະຄວາມຊັງໄດ້ແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໕໓] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

(ພຣະປັດເຈກສຳພຸດທະເຈົ້າ) ລະສຸກແລະທຸກ
ໂສມະນັດແລະໂທມະນັດກ່ອນ ໆ ໄດ້ແລ້ວ
ໄດ້ອຸເປກຂາແລະສະມະຖະອັນສະອາດແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໘)

ຄຳວ່າ ລະສຸກແລະທຸກ ໂສມະນັດແລະໂທມະນັດກ່ອນ ໆ ໄດ້ແລ້ວ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ບັນລຸຈະຕຸດຖະຊານ ອັນບໍ່ມີທຸກ ບໍ່ມີສຸກ ຍ້ອນລະສຸກລະທຸກ ແລະດັບໂສມະນັດແລະໂທມະນັດກ່ອນ ໆ ໄດ້ ມີອຸເປກຂາ ແລະສະຕິອັນບໍລິສຸດຢູ່ ລວມຄວາມວ່າ ລະສຸກ ແລະທຸກ ໂສມະນັດແລະໂທມະນັດກ່ອນ ໆ ໄດ້ແລ້ວ

ຄຳວ່າ ໄດ້ອຸເປກຂາ ແລະສະມະຖະອັນສະອາດແລ້ວ ອະທິບາຍວ່າ

ຄຳວ່າ ອຸເປກຂາ ໄດ້ແກ່ ອຸເປກຂາ ຄວາມເພີກເສີຍ ຄວາມເພີກເສີຍຢ່າງຍິ່ງ ຄວາມທີ່ຈິດສະງົບ ຄວາມທີ່ຈິດສະຫງັດ ຄວາມທີ່ຈິດເປັນກາງໃນຈະຕຸດຖະຊານ

ຄຳວ່າ ສະມະຖະ ໄດ້ແກ່ ຄວາມຕັ້ງໝັ້ນ ຄວາມດຳຣົງໝັ້ນ ຄວາມບໍ່ຄອນແຄນ ຄວາມບໍ່ກວັດແກວ່ງ ຄວາມບໍ່ຟຸ້ງຊ່ານແຫ່ງຈິດ ຄວາມທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ສຳມາສະມາທິ ອຸເປກຂາ ແລະສະມະຖະໃນຈະຕຸດຖະຊານ ສະອາດ ຄື ບໍລິສຸດ ຜຸດຜ່ອງ ບໍ່ມີກິເລດເຄື່ອງຍົ່ວຍຸ ປາສະຈາກອຸປະກິເລດ ອ່ອນໂຍນ ຄວນແກ່ການງານ ຕັ້ງໝັ້ນ ເຖິງຄວາມບໍ່ຫວັ່ນໄຫວ

ຄຳວ່າ ໄດ້ອຸເປກຂາ ແລະສະມະຖະອັນສະອາດແລ້ວ ອະທິບາຍວ່າ ຄື ໄດ້ຮັບ ປະສົບ ໄດ້ພົບພໍ້ ສະເພາະຕົນແລ້ວເຊິ່ງອຸເປກຂາໃນຈະຕຸດຖະຊານ ແລະສະມະຖະ ລວມຄວາມວ່າ ໄດ້ອຸເປກຂາ ແລະສະມະຖະ ອັນສະອາດແລ້ວ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນ ຈຶ່ງກ່າວວ່າ

(ພຣະປັດເຈກສຳພຸດທະເຈົ້າ) ລະສຸກ ແລະທຸກ
ໂສມະນັດ ແລະໂທມະນັດກ່ອນ ໆ ໄດ້ແລ້ວ
ໄດ້ອຸເປກຂາແລະສະມະຖະອັນສະອາດແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໕໔] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

(ພຣະປັດເຈກສຳພຸດທະເຈົ້າ) ຕັ້ງຄວາມພຽນ
ເພື່ອບັນລຸປະໂຫຍດຢ່າງຍິ່ງ
ມີຈິດບໍ່ທໍ້ທອ່ນ ບໍ່ປະພຶດຂີ້ຄ້ານ
ມີຄວາມພາກພຽນໝັ້ນຄົງ ເຂົ້າເຖິງເຫື່ອແຮງແລະກຳລັງແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໑)

ຄຳວ່າ ຕັ້ງຄວາມພຽນ ເພື່ອບັນລຸປະໂຫຍດຢ່າງຍິ່ງ ອະທິບາຍວ່າ ອະມະຕະນິບພານ ໄດ້ແກ່ ທຳເປັນບ່ອນຣະງັບສັງຂານທັງປວງ ເປັນບ່ອນສະລັດຖິ້ມອຸປະທິທັງໝົດ ເປັນບ່ອນສິ້ນຕັນຫາ ເປັນບ່ອນຄາຍກຳໜັດ ເປັນບ່ອນດັບກິເລດ ເປັນບ່ອນເຢັນສະນິດ ຮຽກວ່າປະໂຫຍດຢ່າງຍິ່ງ

ພຣະປັດເຈກສຳພຸດທະເຈົ້ານັ້ນຕັ້ງຄວາມພຽນເພື່ອບັນລຸ ຄື ເພື່ອໄດ້ ໄດ້ສະເພາະ ເຖິງ ຖືກຕ້ອງ ເຮັດໃຫ້ແຈ້ງປະໂຫຍດຢ່າງຍິ່ງ ຢູ່ ໄດ້ແກ່ ລົງແຮງ ມີຄວາມບາກບັ່ນ ໝັ້ນຄົງ ເພື່ອລະອະກຸສົນທຳ ເພື່ອຄວາມເຖິງພ້ອມແຫ່ງກຸສົນທຳ ບໍ່ຖືເບົາໃນກຸສົນທຳ ລວມຄວາມວ່າ ຕັ້ງຄວາມພຽນ ເພື່ອບັນລຸປະໂຫຍດຢ່າງຍິ່ງ

## ວ່າດ້ວຍການຕັ້ງຄວາມພຽນເພື່ອບັນລຸທຳ

ຄຳວ່າ ມີຈິດບໍ່ທໍ້ທອ່ນ ບໍ່ປະພຶດຂີ້ຄ້ານ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ປູກສັນທະໃຫ້ເກີດ ພະຍາຍາມ ຕັ້ງຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອປ້ອງກັນບໍ່ໃຫ້ເກີດບາບອະກຸສົນທຳທີ່ຍັງບໍ່ເກີດ ປູກສັນທະໃຫ້ເກີດ ພະຍາຍາມຕັ້ງຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ປູກສັນທະໃຫ້ເກີດ ພະຍາຍາມ ຕັ້ງຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອຄວາມເກີດຂຶ້ນແຫ່ງກຸສົນທຳທີ່ຍັງບໍ່ເກີດຂຶ້ນ ປູກສັນທະໃຫ້ເກີດ ພະຍາຍາມ ຕັ້ງຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອຄວາມດຳຣົງຢູ່ ບໍ່ຟັ່ນເຟືອນ ຈະເລີນຍິ່ງໄພບູນ ຈະເລີນບໍລິບູນ ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ ລວມຄວາມວ່າ ມີຈິດບໍ່ທໍ້ທອ່ນ ບໍ່ປະພຶດຂີ້ຄ້ານ ແນວນີ້

ອີກໄນໜຶ່ງ ພຣະປັດເຈກສຳພຸດທະເຈົ້າປະຄອງຈິດ ມຸ້ງໝັ້ນວ່າ ຊີ້ນແລະເລືອດໃນຮ່າງກາຍຈົ່ງເຫືອດແຫ້ງໄປ ຈະເຫຼືອຢູ່ແຕ່ໜັງ ເອັນແລະກະດູກກໍຕາມທີເທີ້ນ ຜົນໃດເພິ່ງບັນລຸໄດ້ດ້ວຍເຫື່ອແຮງຂອງບຸຣຸດ ດ້ວຍກຳລັງຂອງບຸຣຸດ ດ້ວຍຄວາມພຽນຂອງບຸຣຸດ ດ້ວຍຄວາມບາກບັ່ນຂອງບຸຣຸດ (ຖ້າ) ບໍ່ບັນລຸຜົນນັ້ນແລ້ວກໍຈັກບໍ່ຢຸດຄວາມພຽນ ແມ່ນແນວນີ້ຊື່ວ່າມີຈິດບໍ່ທໍ້ທອ່ນ ບໍ່ປະພຶດຂີ້ຄ້ານ ພຣະປັດເຈກສຳພຸດທະເຈົ້າປະຄອງຈິດມຸ້ງໝັ້ນໄວ້ວ່າ

เมื่อเธิาຍັງຖອນລູກສອນຄືຕັນຫາຂຶ້ນບໍ່ໄດ້
ເຮົາຈະບໍ່ກິນ ບໍ່ດື່ມ ບໍ່ອອກໄປຈາກວິຫານ
ທັງຈັກບໍ່ເອນກາຍນອນ

ແມ່ນແນວນີ້ ຊື່ວ່າມີຈິດບໍ່ທໍ້ຖອຍ ບໍ່ປະພຶດຂີ້ຄ້ານ ພຣະປັດເຈກສຳພຸດທະເຈົ້າປະຄອງຈິດມຸ້ງໝັ້ນວ່າ ຕາບໃດທີ່ຈິດຂອງເຮົາຍັງບໍ່ຫຼຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຢຶດໝັ້ນ ຕາບນັ້ນເຮົາຈັກບໍ່ທຳລາຍບັນລັງນີ້ ແມ່ນແນວນີ້ ຊື່ວ່າມີຈິດບໍ່ທໍ້ຖອຍ ບໍ່ປະພຶດຂີ້ຄ້ານ

ພຣະປັດເຈກສຳພຸດທະເຈົ້າປະຄອງຈິດມຸ້ງໝັ້ນໄວ້ວ່າ ຕາບໃດທີ່ຈິດຂອງເຮົາຍັງບໍ່ຫຼຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຢຶດໝັ້ນ ຕາບນັ້ນເຮົາຈັກບໍ່ລຸກຈາກບ່ອນນັ່ງນີ້ ແມ່ນແນວນີ້ ຊື່ວ່າມີຈິດບໍ່ທໍ້ຖອຍ ບໍ່ປະພຶດຂີ້ຄ້ານ

ພຣະປັດເຈກສຳພຸດທະເຈົ້າປະຄອງຈິດມຸ້ງໝັ້ນໄວ້ວ່າ ຕາບໃດທີ່ຈິດຂອງເຮົາຍັງບໍ່ຫຼຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຢຶດໝັ້ນ ຕາບນັ້ນເຮົາຈັກບໍ່ລົງຈາກບ່ອນຈົງກົມນີ້ ບໍ່ອອກຈາກວິຫານ ບໍ່ອອກຈາກເຮືອນຫຼັງຄາດ້ານດຽວ ບໍ່ອອກຈາກຜາສາດ ບໍ່ອອກຈາກເຮືອນໂລ້ນ ບໍ່ອອກຈາກຖ້ຳ ບໍ່ອອກຈາກບ່ອນຫຼົບຫຼີກ ບໍ່ອອກຈາກກຸດຕິ ບໍ່ອອກຈາກເຮືອນຍອດ ບໍ່ອອກຈາກປ້ອມ ບໍ່ອອກຈາກໂຮງມົນ ບໍ່ອອກຈາກເຮືອນທີ່ມີເຄື່ອງກັ້ນ ບໍ່ອອກຈາກສາລາທີ່ບຳຣຸງ ບໍ່ອອກຈາກມົນດົບ ບໍ່ອອກຈາກເຫງົ້າໄມ້ນີ້ ແມ່ນແນວນີ້ ຊື່ວ່າມີຈິດບໍ່ທໍ້ຖອຍ ບໍ່ປະພຶດຂີ້ຄ້ານ

ພຣະປັດເຈກສຳພຸດທະເຈົ້າປະຄອງຈິດມຸ້ງໝັ້ນວ່າ ເຮົາຈັກນຳມາ ນຳມາດ້ວຍດີ ບັນລຸ ສຳຜັດ ເຮັດໃຫ້ແຈ້ງເຊິ່ງອະຣິຍະທຳເຊົ້າວັນນີ້ເອງ ແມ່ນແນວນີ້ ກໍຊື່ວ່າມີຈິດບໍ່ທໍ້ຖອຍ ບໍ່ປະພຶດຂີ້ຄ້ານ

ພຣະປັດເຈກສຳພຸດທະເຈົ້າປະຄອງຈິດມຸ້ງໝັ້ນວ່າ ເຮົາຈັກນຳມາ ນຳມາດ້ວຍດີ ບັນລຸສຳຜັດ ເຮັດໃຫ້ແຈ້ງເຊິ່ງອະຣິຍະທຳພາຍໃນທ່ຽງນີ້ຯລຯ ຄ່ຳນີ້ຯລຯ ກ່ອນພັດຯລຯ ຫຼັງພັດຯລຯ ປະຖົມຍາມຯລຯ ມັດຊິມະຍາມຯລຯ ປັດສິມຍາມຯລຯ ຂ້າງແຮມຯລຯ ຂ້າງຂຶ້ນຯລຯ ລະດູຝົນຯລຯ ລະດູໜາວຯລຯ ລະດູຮ້ອນຯລຯ ປະຖົມວັຍຯລຯ ມັດຊິມະໄວຯລຯ ປັດສິມໄວ ນີ້ ແມ່ນແນວນີ້ ຊື່ວ່າມີຈິດບໍ່ທໍ້ຖອຍບໍ່ປະພຶດຂີ້ຄ້ານ

ຄຳວ່າ ມີຄວາມພາກພຽນໝັ້ນຄົງ ໃນຄຳວ່າ ມີຄວາມພາກພຽນໝັ້ນຄົງ ເຂົ້າເຖິງເຫື່ອແຮງແລະກຳລັງແລ້ວ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ສະມາທານໝັ້ນຄົງ ສະມາທານແນ່ວແນ່ໃນກຸສົນທຳ ຄື ກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດ ການຈຳແນກທານ ການສະມາທານສິນ ການຮັກສາອຸໂປສົດ ຄວາມເກື້ອກູນມານດາ ຄວາມເກື້ອກູນບິດາ ຄວາມເກື້ອກູນສະມະນະ ຄວາມເກື້ອກູນພາມ ຄວາມເປັນຜູ້ອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນ (ແລະ) ໃນທຳອັນເປັນກຸສົນຍິ່ງອື່ນ ໆ ລວມຄວາມວ່າ ມີຄວາມພາກພຽນໝັ້ນຄົງ

ຄຳວ່າ ເຂົ້າເຖິງເຫື່ອແຮງແລະກຳລັງແລ້ວ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍເຫື່ອແຮງກຳລັງ ຄວາມພຽນ ຄວາມບາກບັ່ນ ແລະປັນຍາ ລວມຄວາມວ່າ ມີຄວາມພາກພຽນໝັ້ນຄົງ ເຂົ້າເຖິງເຫື່ອແຮງແລະກຳລັງແລ້ວ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້າຈຶ່ງກ່າວວ່າ

(ພຣະປັດເຈກສຳພຸດທະເຈົ້າ) ຕັ້ງຄວາມພຽນ
ເພື່ອບັນລຸປະໂຫຍດຢ່າງຍິ່ງ
ມີຈິດບໍ່ທໍ້ທ້ອຍ ບໍ່ປະພຶດຂີ້ຄ້ານ
ມີຄວາມພາກພຽນໝັ້ນຄົງ ເຂົ້າເຖິງເຫື່ອແຮງແລະກຳລັງແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໕໕] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

(ພຣະປັດເຈກສຳພຸດທະເຈົ້າ) ບໍ່ລະການຫຼີບຫຼີກແລະຊານ
ປະພຶດທຳສົມຄວນແກ່ທຳເປັນນິດ
ພິຈາລະນາເຫັນໂທດໃນພົບແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໔)

ຄຳວ່າ ບໍ່ລະການຫຼີບຫຼີກແລະຊານ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ເປັນຜູ້ພໍໃຈໃນຄວາມຫຼີບຫຼີກ ຍິນດີໃນຄວາມຫຼີບຫຼີກ ໝັ່ນປະກອບຄວາມສະຫງົບແຫ່ງຈິດພາຍໃນ ບໍ່ຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນການຢູ່ໃນເຮືອນວ່າງ ມີຊານ ຍິນດີໃນຊານ ໝັ່ນປະກອບໃນຄວາມເປັນຜູ້ມີຈິດມີອາລົມໜຶ່ງດຽວ ໜັກໃນປະໂຫຍດຂອງຕົນ ລວມຄວາມວ່າ ການຫຼີບຫຼີກ

ຄຳວ່າ ບໍ່ລະໆລໆ ແລະຊານ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ບໍ່ລະຊານດ້ວຍເຫດ ໔ ຢ່າງ ຄື

໑. ທ່ານປະກອບ ປະກອບທົ່ວ ຂວນຂວາຍ ມຸ້ງໝັ້ນ ມຸ້ງໝັ້ນສະເໝີ ເພື່ອຄວາມເກີດຂຶ້ນແຫ່ງປະຖົມຊານທີ່ຍັງບໍ່ເກີດຂຶ້ນໆລໆ ເພື່ອຄວາມເກີດຂຶ້ນແຫ່ງທຸຕິຍະຊານທີ່ຍັງບໍ່ເກີດຂຶ້ນໆລໆ ເພື່ອຄວາມເກີດຂຶ້ນແຫ່ງຕະຕິຍະຊານທີ່ຍັງບໍ່ເກີດຂຶ້ນໄດ້ແກ່ ປະກອບ ປະກອບທົ່ວ ຂວນຂວາຍ ມຸ້ງໝັ້ນ ມຸ້ງໝັ້ນສະເໝີ ເພື່ອຄວາມເກີດຂຶ້ນແຫ່ງຈະຕຸດຖະຊານທີ່ຍັງບໍ່ເກີດຂຶ້ນ ລວມຄວາມວ່າ ບໍ່ລະໆລໆ ແລະຊານ ແນວນີ້ແດ່

໔. ທ່ານຊ່ອງເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງປະຖົມຊານທີ່ເກີດຂຶ້ນແລ້ວໆລໆ ທຸຕິຍະຊານທີ່ເກີດຂຶ້ນແລ້ວໆລໆ ຕະຕິຍະຊານທີ່ເກີດຂຶ້ນແລ້ວໆລໆ ທ່ານຊ່ອງເສບຈະເລີນເຮັດໃຫ້ຫຼາຍເຊິ່ງຈະຕຸດຖະຊານທີ່ເກີດຂຶ້ນແລ້ວ ລວມຄວາມວ່າ ບໍ່ລະໆລໆ ແລະຊານ ແນວນີ້ແດ່ ລວມຄວາມວ່າ ບໍ່ລະການຫຼີບຫຼີກແລະຊານ

ຄຳວ່າ ປະພຶດທຳສົມຄວນແກ່ທຳເປັນນິດ ອະທິບາຍວ່າ ສະຕິປັດຖານ ໔ ໆລໆ ອະຣິຍະມັກມີອົງ ໘ ຮຽກວ່າ ທຳ

ທຳສົມຄວນ ເປັນແນວໃດ?

ຄື ການປະຕິບັດຊອບ ການປະຕິບັດສົມຄວນ ການປະຕິບັດບໍ່ເປັນຂ້າເສິກ ການປະຕິບັດເອື້ອປະໂຫຍດ ການປະຕິບັດທຳຖືກຕ້ອງຕາມຫຼັກທຳ ການຮັກສາສິນໃຫ້ບໍລິບູນ ການສັງລວມອິນຊີ ຄວາມຮູ້ຈັກປະມານໃນການບໍຣິໂພກອາຫານ ຄວາມເປັນຜູ້ມີຄວາມພຽນເປັນເຄື່ອງຕື່ນຢູ່ສະເໝີ ສະຕິແລະສຳປະຊັນຍະ ເຫຼົ່ານີ້ຮຽກວ່າ ທຳສົມຄວນ

ຄຳວ່າ ປະພຶດທຳສົມຄວນແກ່ທຳເປັນນິດ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນປະພຶດຢູ່ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປໃນທຳຕະຫຼອດການເປັນນິດ ຄື ຕະຫຼອດການຍັ່ງຍືນ ຕະຫຼອດການຕໍ່ເນື່ອງກັນ ຕະຫຼອດການສືບເນື່ອງກັນ ຕະຫຼອດການຕິດຕໍ່ກັນ ຕະຫຼອດການເປັນລຳດັບ ຕະຫຼອດການຕິດຕໍ່ກັນເໝືອນຣະລອກຄື້ນ ຕະຫຼອດການເປັນໄປຕໍ່ເນື່ອງບໍ່ຂາດສາຍ ຕະຫຼອດການ ສືບຕໍ່ກັນກະຊັ້ນຊິດ ຕະຫຼອດການກ່ອນພັດ ຫຼັງພັດ ຕະຫຼອດປຸຣິມະຍາມ ມັດຊິມະຍາມ ປັດສິມຍາມ ຕະຫຼອດຂ້າງແຮມ ຂ້າງຂຶ້ນ ຕະຫຼອດລະດູຝົນ ລະດູໜາວ ລະດູຮ້ອນ ຕະຫຼອດປະຖົມໄວ ມັດຊິມະໄວ ປັດສິມໄວ ລວມຄວາມວ່າ ປະພຶດທຳສົມຄວນແກ່ທຳເປັນນິດ

ຄຳວ່າ ພິຈາລະນາເຫັນໂທດໃນພົບແລ້ວ ອະທິບາຍວ່າ ພິຈາລະນາເຫັນໂທດໃນພົບແລ້ວ ວ່າ ສັງຂານທັງປວງບໍ່ທ່ຽງ ພິຈາລະນາເຫັນໂທດໃນພົບແລ້ວວ່າ ສັງຂານທັງປວງເປັນທຸກໆລໆ ທຳທັງປວງເປັນອະນັດຕາ ໆລໆ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ ລວມຄວາມວ່າ ພິຈາລະນາເຫັນໂທດໃນພົບແລ້ວ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

(ພຣະປັດເຈກສຳພຸດທະເຈົ້າ) ບໍ່ລະການຫຼີບຫຼີກແລະຊານ
ປະພຶດທຳສົມຄວນແກ່ທຳເປັນນິດ
ພິຈາລະນາເຫັນໂທດໃນພົບແລ້ວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໕໖] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

(ພຣະປັດເຈກສຳພຸດທະເຈົ້າ) ປາຖະໜາຄວາມສິ້ນຕັນຫາ
ບໍ່ຜະໝາດ ບໍ່ໂງ່ຈ້າ ຄົງແກ່ຮຽນ ມີສະຕິ
ຜູ້ມີສັງຂາຕະທຳ ຜູ້ແນ່ນອນ ມີຄວາມມຸ້ງໝັ້ນ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໕)

ຄຳວ່າ ປາຖະໜາຄວາມສິ້ນຕັນຫາ ບໍ່ຜະໝາດ ອະທິບາຍວ່າ

ຄຳວ່າ ຕັນຫາ ໄດ້ແກ່ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ

ຄຳວ່າ ປາຖະໜາຄວາມສິ້ນຕັນຫາ ອະທິບາຍວ່າ ຕ້ອງການ ປາຖະໜາ ຄື ຍິນດີ ມຸ້ງໝາຍ ມຸ້ງຫວັງຄວາມສິ້ນຣາຄະ ຄວາມສິ້ນໂທສະ ຄວາມສິ້ນໂມຫະ ຄວາມສິ້ນຄະຕິ ຄວາມສິ້ນອຸປະບັດ ຄວາມສິ້ນປະຕິສົນທິ ຄວາມສິ້ນພົບ ຄວາມສິ້ນສັງຂານ ຄວາມສິ້ນວັດຕະ ລວມຄວາມວ່າ ປາຖະໜາຄວາມສິ້ນຕັນຫາ

ຄຳວ່າ ບໍ່ຜະໝາດ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ເຮັດໂດຍເຄົາລົບ ເຮັດຕິດຕໍ່ ຯລຯ ຊື່ວ່າ ບໍ່ຜະໝາດໃນກຸສົນທຳທັງຫຼາຍ ລວມຄວາມວ່າ ປາຖະໜາຄວາມສິ້ນຕັນຫາ ບໍ່ຜະໝາດ

ຄຳວ່າ ບໍ່ໂງ່ຈ້າ ໃນຄຳວ່າ ບໍ່ໂງ່ຈ້າ ຄົງແກ່ຮຽນ ມີສະຕິ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ເປັນບັນດິດ ມີປັນຍາ ມີປັນຍາເຄື່ອງຕັດສະຮູ້ ມີຍານ ມີປັນຍາຊັດແຈ້ງ ມີປັນຍາເຄື່ອງທຳລາຍກິເລດ ລວມຄວາມວ່າ ບໍ່ໂງ່ຈ້າ

ຄຳວ່າ ຄົງແກ່ຮຽນ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ເປັນພະຫູສູດ ຊົງຈຳສິ່ງທີ່ຮໍ່າຮຽນມາແລ້ວໄວ້ໄດ້ ສັ່ງສົມສິ່ງທີ່ຮໍ່າຮຽນມາແລ້ວໄວ້ໄດ້ ຄື ທຳເຫຼົ່າໃດ ທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນ ພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ທຳເຫັນ ປານນັ້ນເປັນທຳທີ່ທ່ານຮໍ່າຮຽນມາຫຼາຍ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດຊັດເຈນຕາມທິດສະດີ ລວມຄວາມວ່າ ຄົງແກ່ຮຽນ

ຄຳວ່າ ມີສະຕິ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນເປັນຜູ້ມີສະຕິ ຄື ພຽບພ້ອມດ້ວຍສະຕິ ແລະປັນຍາຮັກສາຕົນຢ່າງປະເສີດ ຣະລຶກໄດ້ ຕາມຣະລຶກເຖິງກຳທີ່ເຮັດ ຄຳທີ່ເວົ້າໄວ້ດົນນານແລ້ວໄດ້ ລວມຄວາມວ່າ ບໍ່ໂງ່ຈ້າ ຄົງແກ່ຮຽນ ມີສະຕິ

ຄຳວ່າ ຜູ້ມີສັງຂາຕະທຳ ຜູ້ແນ່ນອນ ມີຄວາມມຸ້ງໝັ້ນ ອະທິບາຍວ່າ ຍານ ທ່ານຮຽກວ່າ ສັງຂາຕະທຳ ໄດ້ແກ່ ຄວາມຮູ້ທົ່ວ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງາຍ ຄວາມເລືອກເຟັ້ນທຳ ສຳມາທິດຖິ

ຄຳວ່າ ຜູ້ມີສັງຂາຕະທຳ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ຜູ້ມີສັງຂາຕະທຳ ຄື ຜູ້ຮູ້ທຳ ຜູ້ທຽບຄຽງທຳ ຜູ້ພິຈາລະນາທຳ ຜູ້ຮູ້ແຈ້ງທຳ ຜູ້ເຫັນແຈ້ງທຳ ໄດ້ແກ່ ຜູ້ມີສັງຂາຕະທຳ ຜູ້ຮູ້ທຳ ຜູ້ທຽບຄຽງທຳ ຜູ້ພິຈາລະນາທຳ ຜູ້ຮູ້ແຈ້ງທຳ ຜູ້ເຫັນແຈ້ງທຳວ່າ ສັງຂານທັງປວງບໍ່ທ່ຽງ ຯລຯ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງໝົດລ້ວນມີຄວາມດັບໄປເປັນທຳມະດາ

ອີກໄນໜຶ່ງ ພຣະປັດເຈກສຳພຸດທະເຈົ້ານັ້ນຮູ້ຂັນ ທາດ ອາຍະຕະນະ ຄະຕິ ອຸປະບັດ ປະຕິສົນທິ ພົບ ສັງຂານ ວັດຕະໄດ້ແລ້ວ

ອີກໄນໜຶ່ງ ພຣະປັດເຈກສຳພຸດທະເຈົ້ານັ້ນດຳຣົງຢູ່ໃນທີ່ສຸດແຫ່ງຂັນ ໃນທີ່ສຸດແຫ່ງທາດ ໃນທີ່ສຸດແຫ່ງອາຍະຕະນະ ໃນທີ່ສຸດແຫ່ງຄະຕິ ໃນທີ່ສຸດແຫ່ງອຸປະບັດ ໃນທີ່ສຸດແຫ່ງປະຕິສົນທິ ໃນທີ່ສຸດແຫ່ງພົບ ໃນທີ່ສຸດແຫ່ງສົງສານ ໃນທີ່ສຸດແຫ່ງວັດຕະ ໃນທີ່ສຸດແຫ່ງສັງຂານ ດຳຣົງຢູ່ໃນພົບສຸດທ້າຍ ດຳຣົງຢູ່ໃນອັດຕະພາບສຸດທ້າຍ ພຣະປັດເຈກສຳພຸດທະເຈົ້າຜູ້ຊົງຮ່າງກາຍສຸດທ້າຍໄວ້

ພຣະປັດເຈກສຳພຸດທະເຈົ້າໃດມີພົບນີ້ເປັນພົບສຸດທ້າຍ
ມີການປະຊຸມແຫ່ງຂັນນີ້ເປັນຄັ້ງສຸດທ້າຍ
ພຣະປັດເຈກສຳພຸດທະເຈົ້ານັ້ນ ບໍ່ມີການວຽນເກີດ ວຽນຕາຍ
ແລະພົບໃໝ່ກໍບໍ່ມີອີກ

ຍ້ອນເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນ ຈຶ່ງຊື່ວ່າຜູ້ມີສັງຂາຕະທຳ

ຄຳວ່າ ຜູ້ແນ່ນອນ ອະທິບາຍວ່າ ອະຣິຍະມັກ ໔ ຮຽກວ່າ ນິຍາມ (ຄວາມແນ່ນອນ) ພຣະປັດເຈກສຳພຸດທະເຈົ້າ ປະກອບດ້ວຍອະຣິຍະມັກ ໔ ຈຶ່ງຊື່ວ່າຜູ້ແນ່ນອນ ໄດ້ແກ່ບັນລຸ ເຖິງພ້ອມເຖິງການສຳຜັດ ເຮັດໃຫ້ແຈ້ງຄວາມແນ່ນອນ ດ້ວຍອະຣິຍະມັກ ຈຶ່ງຊື່ວ່າຜູ້ແນ່ນອນ

ຄຳວ່າ ມີຄວາມມຸ້ງໝັ້ນ ອະທິບາຍວ່າ ວິຣິຍະ ຮຽກວ່າ ຄວາມມຸ້ງໝັ້ນ ໄດ້ແກ່ ການຕັ້ງຄວາມພຽນ ການກ້າວອອກ ການກ້າວໄປຂ້າງໜ້າ ການກ້າວຂຶ້ນໄປ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມດຸໝັ່ນ ຄວາມໝັ້ນຄົງ ຄວາມຊົງໄວ້ ຄວາມບາກບັ່ນບໍ່ທໍ້ຖອຍ ຄວາມບໍ່ປະຖິ້ມສັນທະ ຄວາມບໍ່ປະຖິ້ມທຸຣະ ຄວາມປະຄອງທຸຣະໄວ້ ວິຣິຍະ ວິຣິຍິນຊີ ວິຣິຍະພະລະ ສຳມາວາຍາມະອັນເປັນໄປທາງໃຈ

ພຣະປັດເຈກສຳພຸດທະເຈົ້ານັ້ນປະກອບ ປະກອບພ້ອມ ດຳເນີນໄປ ດຳເນີນໄປພ້ອມ ເປັນໄປ ເປັນໄປພ້ອມ ພຽບພ້ອມດ້ວຍຄວາມມຸ້ງໝັ້ນນີ້ ດັ່ງນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນ

ຈຶ່ງຊື່ວ່າມີຄວາມມຸ້ງໝັ້ນ ລວມຄວາມວ່າ ຜູ້ມີສັງຂາຕະທຳ ຜູ້ແນ່ນອນ ມີຄວາມມຸ້ງໝັ້ນ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

(ພຣະປັດເຈກສຳພຸດທະເຈົ້າ) ປາຖະໜາຄວາມສິ້ນຕັນຫາ
ບໍ່ຜະໝາດ ບໍ່ໂງ່ຈ້າ ຄົງແກ່ຮຽນ ມີສະຕິ
ຜູ້ມີສັງຂາຕະທຳ ຜູ້ແນ່ນອນ ມີຄວາມມຸ້ງໝັ້ນ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໕໗] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

(ພຣະປັດເຈກສຳພຸດທະເຈົ້າ) ບໍ່ສະດຸ້ງຍ້ອນສຽງ
ເໝືອນຣາດຊະສີ ບໍ່ຕິດຕາໜ່າງເໝືອນລົມ ບໍ່ປຽກນ້ຳເໝືອນບົວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໖)

ຄຳວ່າ ບໍ່ສະດຸ້ງຍ້ອນສຽງ ເໝືອນຣາດຊະສີ ອະທິບາຍວ່າ ສີຫະພະຍາມຮ້ອງດ້ວຍບໍ່ສະດຸ້ງ ບໍ່ຫວາດຫວັ່ນ ບໍ່ຫວາດສຽວ ບໍ່ສະທົກສະທ້ານ ບໍ່ຕົກໃຈ ບໍ່ຢ້ານກົວ ບໍ່ຢ້ານ ບໍ່ຫວາດສຽວ ບໍ່ສະດຸ້ງ ບໍ່ໜີຍ້ອນສຽງ ສັນໃດ

ແມ່ນພຣະປັດເຈກສຳພຸດທະເຈົ້າ ກໍບໍ່ສະດຸ້ງ ບໍ່ຫວາດຫວັ່ນ ບໍ່ຫວາດສຽວ ບໍ່ສະທົກສະທ້ານ ບໍ່ຕົກໃຈ ບໍ່ຢ້ານກົວ ບໍ່ຢ້ານ ບໍ່ຫວາດສຽວ ບໍ່ສະດຸ້ງ ບໍ່ໜີ ລະໄພ ແລະຄວາມຢ້ານໄດ້ແລ້ວ ໝົດຄວາມຂົນພອງສະຫຍອງເກົ້າຍ້ອນສຽງຢູ່ ສັນນັ້ນ ລວມຄວາມວ່າ ບໍ່ສະດຸ້ງຍ້ອນສຽງເໝືອນຣາດຊະສີ

ຄຳວ່າ ລົມ ໃນຄຳວ່າ ບໍ່ຕິດຕາໜ່າງເໝືອນລົມ ອະທິບາຍວ່າ ລົມຕາເວັນອອກ ລົມຕາເວັນຕົກ ລົມເໜືອ ລົມໃຕ້ ລົມມີຝຸ່ນ ລົມບໍ່ມີຝຸ່ນ ລົມໜາວ ລົມຮ້ອນ ລົມພັດເບົາ ລົມພັດແຮງ ລົມບ້າໝູ ລົມຈາກປີກນົກ ລົມຈາກປີກຄຸດ ລົມຈາກໃບຕານ ລົມຈາກວີ ຕາໜ່າງເຮັດດ້ວຍດ້າຍຮຽກວ່າ ຕາໜ່າງ ລົມບໍ່ຂ້ອງຂັດ ຄື ບໍ່ຢຶດ ບໍ່ຕິດ ບໍ່ພົວພັນຢູ່ທີ່ຕາໜ່າງ ສັນໃດ

ຕາໜ່າງມີ ໒ ຊະນິດ ຄື

໑. ຕາໜ່າງຕັນຫາ
໒. ຕາໜ່າງທິດຖິ ฯລฯ

ນີ້ຊື່ວ່າ ຕາໜ່າງຕັນຫາ ฯລฯ ນີ້ຊື່ວ່າຕາໜ່າງທິດຖິ

ພຣະປັດເຈກສຳພຸດທະເຈົ້ານັ້ນລະຕາໜ່າງຕັນຫາ ສະລັດຖິ້ມຕາໜ່າງທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະຕາໜ່າງຕັນຫາ ສະລັດຖິ້ມຕາໜ່າງທິດຖິໄດ້ແລ້ວ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງບໍ່ຂ້ອງຂັດຢູ່ ໃນຮູບ ສຽງ ฯລฯ ໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະທີ່ໄດ້

ຮັບຮູ້ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ໄດ້ແກ່ ບໍ່ຍຶດ ບໍ່ຜູກ ບໍ່ພົວພັນ ເປັນຜູ້ອອກແລ້ວ ສະລັດອອກ ຫຼຸດພົ້ນ ບໍ່ກ່ຽວຂ້ອງ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ສັນນັ້ນ ລວມຄວາມວ່າ ບໍ່ຕິດຕາໜ່າງເໝືອນລົມ

ຄຳວ່າ ບໍ່ປຽກນ້ຳ ເໝືອນບົວ ອະທິບາຍວ່າ
ດອກບົວ ຮຽກວ່າ ບົວ
ນ້ຳທ່າ ຮຽກວ່າ ນ້ຳ

ດອກບົວບໍ່ປຽກ ຄື ບໍ່ເປື້ອນ ບໍ່ເຂົ້າໄປຕິດດ້ວຍນ້ຳ ນ້ຳບໍ່ປຽກ ບໍ່ເປື້ອນ ບໍ່ເຂົ້າໄປຕິດດອກບົວ ສັນໃດ ຄວາມຍຶດຕິດມີ ໒ ຢ່າງ ຄື (໑) ຄວາມຍຶດຕິດດ້ວຍ ອຳນາດຕັນຫາ (໒) ຄວາມຍຶດຕິດດ້ວຍອຳນາດທິດຖິ ຯລຯ ນີ້ຊື່ວ່າ ຄວາມຍຶດຕິດດ້ວຍອຳນາດຕັນຫາ ຯລຯ ນີ້ຊື່ວ່າ ຄວາມຍຶດຕິດດ້ວຍອຳນາດທິດຖິ

ພຣະປັດເຈກສຳພຸດທະເຈົ້ານັ້ນ ລະຄວາມຍຶດຕິດດ້ວຍອຳນາດຕັນຫາ ສະລັດຖິ້ມຄວາມຍຶດຕິດດ້ວຍອຳນາດທິດຖິໄດ້ແລ້ວ ຍ້ອນເປັນຜູ້ລະຄວາມຍຶດຕິດດ້ວຍອຳນາດຕັນຫາ ສະລັດຖິ້ມຄວາມຍຶດຕິດດ້ວຍອຳນາດທິດຖິແລ້ວ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງບໍ່ຕິດ ບໍ່ຕິດພັນ ບໍ່ເຂົ້າໄປຕິດໃນຮູບ ຯລຯ ສຽງ ຯລຯ ຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ກິ່ນ ຣົດ ໂຜດຖັບພະ ທີ່ໄດ້ຮັບຮູ້ ແລະທຳມາຣົມທີ່ເພິ່ງຮູ້ແຈ້ງ ຄື ບໍ່ຕິດແລ້ວ ບໍ່ຕິດພັນແລ້ວ ບໍ່ເຂົ້າໄປຕິດແລ້ວ ອອກແລ້ວ ສະລັດອອກແລ້ວ ຫຼຸດພົ້ນແລ້ວ ບໍ່ກ່ຽວຂ້ອງແລ້ວ ມີໃຈເປັນອິດສະຫຼະ (ຈາກກິເລດ) ຢູ່ ສັນນັ້ນ ລວມຄວາມວ່າ ບໍ່ປຽກນ້ຳເໝືອນບົວ ຈຶ່ງປະພຶດຢູ່ຜູ້ດຽວເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

(ພຣະປັດເຈກສຳພຸດທະເຈົ້າ) ບໍ່ສະດຸ້ງຍ້ອນສຽງ
ເໝືອນຣາດຊະສີ ບໍ່ຕິດຕາໜ່າງເໝືອນລົມ ບໍ່ປຽກນ້ຳເໝືອນບົວ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໕໗] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ພະຍາສີຫະຣາດມີແຂ້ວເປັນກຳລັງ
ຂົ່ມຂີ່ ຄອບງຳເນື້ອທັງຫຼາຍ ທ່ຽວໄປ ສັນໃດ
ພຣະປັດເຈກສຳພຸດທະເຈົ້າກໍມີປັນຍາເປັນກຳລັງ
ຄອບງຳບຸກຄົນທັງຫຼາຍດ້ວຍປັນຍາ
ໃຊ້ສອຍເສນາສະນະອັນສະຫງັດ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ສັນນັ້ນ (ກ)

ຄຳວ່າ ພະຍາສີຫະຣາດມີແຂ້ວເປັນກຳລັງ ຂົ່ມຂີ່ຄອບງຳເນື້ອທັງຫຼາຍ ທ່ຽວໄປ ສັນໃດ ອະທິບາຍວ່າ ສີຫະພະຍາມະຣຶຄະຣາດ ມີແຂ້ວເປັນກຳລັງ ຄື ມີແຂ້ວເປັນອາວຸດຄອບງຳ

ຄື ຂົ່ມຂີ່ ຖ້ວມທັບ ກຳຈັດ ຍ່ຳຍີສັດເດຍຣັດສານທຸກຈຳພວກ ເປັນຢູ່ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ສັນໃດ

ແມ່ນພຣະປັດເຈກສຳພຸດທະເຈົ້າກໍມີປັນຍາເປັນກຳລັງ ຄື ມີປັນຍາເປັນອາວຸດ ຍ່ອມຄອບງຳ ຄື ຂົ່ມຂີ່ ຖ້ວມທັບ ກຳຈັດ ຍ່ຳຍີບຸກຄົນຜູ້ມີຊີວິດທຸກຈຳພວກດ້ວຍປັນຍາ ປະພຶດຢູ່ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ສັນນັ້ນຄືກັນ ລວມຄວາມວ່າ ພະຍາສີຫະຣາດມີແຂ້ວເປັນກຳລັງຂົ່ມຂີ່ຄອບງຳເນື້ອທັງຫຼາຍ ທ່ຽວໄປ ສັນໃດ

ຄຳວ່າ ໃຊ້ສອຍເສນາສະນະອັນສະຫງັດ ອະທິບາຍວ່າ ສີຫະພະຍາມະຣຶຄະຣາດ ເຂົ້າສູ່ປ່າເລິກ ເປັນຢູ່ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປ ສັນໃດ ແມ່ນພຣະປັດເຈກສຳພຸດທະເຈົ້າກໍຍ່ອມໃຊ້ສອຍເສນາສະນະອັນເປັນປ່າທຶບແລະປ່າເລົ່າອັນສະຫງັດ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນສະຖານບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນບ່ອນຫຼີບຫຼີກ ພຣະປັດເຈກສຳພຸດທະເຈົ້ານັ້ນ ຍ່າງໄປຜູ້ດຽວ ຢືນຜູ້ດຽວ ນັ່ງຜູ້ດຽວ ນອນຜູ້ດຽວ ເຂົ້າໝູ່ບ້ານເພື່ອບິນທະບາດຜູ້ດຽວ ກັບ ຜູ້ດຽວ ນັ່ງໃນບ່ອນລັບຜູ້ດຽວ ອະທິຖານຈົງກົມຜູ້ດຽວ ປະພຶດຢູ່ ຄື ຢູ່ ເຄື່ອນໄຫວ ເປັນໄປ ລ້ຽງຊີວິດ ດຳເນີນໄປ ຍັງຊີວິດໃຫ້ດຳເນີນໄປຜູ້ດຽວ ສັນນັ້ນ ລວມຄວາມວ່າ ໃຊ້ສອຍເສນາສະນະອັນສະຫງັດ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

> ພະຍາສີຫະຣາດມີແຂ້ວເປັນກຳລັງ
> ຂົ່ມຂີ່ຄອບງຳເນື້ອທັງຫຼາຍ ທ່ຽວໄປ ສັນໃດ
> ພຣະປັດເຈກສຳພຸດທະເຈົ້າກໍມີປັນຍາເປັນກຳລັງ
> ຄອບງຳບຸກຄົນທັງຫຼາຍດ້ວຍປັນຍາ
> ໃຊ້ສອຍເສນາສະນະອັນສະຫງັດ
> ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ສັນນັ້ນ

[໑໕໙] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

> (ພຣະປັດເຈກສຳພຸດທະເຈົ້າ) ເສບອາໄສເມດຕາ
> ກະລຸນາ ມຸທິຕາແລະອຸເປກຂາ ອັນເປັນວິມຸດຕິຕາມການ
> ສັດໂລກທັງປວງບໍ່ໄດ້ກຽດຊັງ
> ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໗)

ຄຳວ່າ ເສບອາໄສເມດຕາ ກະລຸນາ ມຸທິຕາ ແລະອຸເປກຂາ ອັນເປັນວິມຸດຕິຕາມການ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນມີເມດຕາຈິດ ແຜ່ໄປຕະຫຼອດທິດໜຶ່ງທິດ ໆລໆ ທິດ ໆລໆ ທິດ ໔ ໆລໆ ກໍເຊັ່ນດຽວກັນ ທັງເບື້ອງເທິງ ເບື້ອງລຸ່ມ ເບື້ອງຂວາງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານ ດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ພຣະປັດເຈກສຳພຸດທະເຈົ້າມີກະລຸນາຈິດ ໆລໆ ມີມຸທິຕາຈິດ ໆລໆ ມີອຸເປກຂາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ລວມຄວາມວ່າ ເສບອາໄສເມດຕາ ກະລຸນາ ມຸທິຕາ ແລະອຸເປກຂາ ອັນເປັນວິມຸດຕິຕາມການ

ຄຳວ່າ ສັດໂລກທັງປວງ ບໍ່ໄດ້ກຽດຊັງ ອະທິບາຍວ່າ ຍ້ອນເປັນຜູ້ຈະເລີນພົມວິຫານມີເມດຕາເປັນຕົ້ນ ສັດທີ່ຢູ່ທາງທິດຕາເວັນອອກກໍບໍ່ກຽດຊັງ ສັດທີ່ຢູ່ທາງທິດຕາເວັນຕົກກໍບໍ່ກຽດຊັງ ໆລໆ ສັດທີ່ຢູ່ທາງທິດເໜືອ ໆລໆ ສັດທີ່ຢູ່ທາງທິດໃຕ້ ໆລໆ ສັດທີ່ຢູ່ທາງທິດຕາເວັນອອກສຽງໃຕ້ (ອາຄະເນ) ໆລໆ ສັດທີ່ຢູ່ທາງທິດຕາເວັນຕົກສຽງເໜືອ (ພາຍັບ) ໆລໆ ສັດທີ່ຢູ່ທາງທິດຕາເວັນອອກສຽງເໜືອ(ອີສານ) ໆລໆ ສັດທີ່ຢູ່ທາງທິດຕາເວັນຕົກສຽງໃຕ້ (ຫໍຣະດີ) ໆລໆ ສັດທີ່ຢູ່ທາງທິດເບື້ອງລຸ່ມ ໆລໆ ສັດທີ່ຢູ່ທາງທິດເບື້ອງເທິງ ໆລໆ ສັດທີ່ຢູ່ທັງສິບທິດກໍບໍ່ກຽດຊັງ

ຄຳວ່າ ສັດໂລກທັງປວງ ບໍ່ໄດ້ກຽດຊັງ ອະທິບາຍວ່າ ສັດໂລກທັງປວງບໍ່ກຽດຊັງ ຄື ບໍ່ໂກດ ບໍ່ອາຄາດ ບໍ່ກະທົບກະທັ່ງ ລວມຄວາມວ່າ ສັດໂລກທັງປວງ ບໍ່ໄດ້ກຽດຊັງ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

(ພຣະປັດເຈກສຳພຸດທະເຈົ້າ) ເສບອາໄສເມດຕາ
ກະລຸນາ ມຸທິຕາແລະອຸເປກຂາ ອັນເປັນວິມຸດຕິຕາມການ
ສັດໂລກທັງປວງບໍ່ໄດ້ກຽດຊັງ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໓໐] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

(ພຣະປັດເຈກສຳພຸດທະເຈົ້າ) ລະຣາຄະ ໂທສະ ແລະໂມຫະ
ທຳລາຍສັງໂຍດໄດ້ແລ້ວ ບໍ່ສະດຸ້ງໃນເວລາສິ້ນຊີວິດ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໗)

ຄຳວ່າ ລະຣາຄະ ໂທສະ ແລະໂມຫະ ອະທິບາຍວ່າ

ຄຳວ່າ ຣາຄະ ໄດ້ແກ່ ຄວາມກຳໜັດ ຄວາມກຳໜັດແຮງກ້າ ຯລຯ ອະພິດຊາ ອະກຸສົນມູນ ຄື ໂລພະ

ຄຳວ່າ ໂທສະ ໄດ້ແກ່ ຄວາມອາຄາດແຫ່ງຈິດ ຯລຯ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມບໍ່ແຊ່ມຊື່ນຈິດ

ຄຳວ່າ ໂມຫະ ຄື ຄວາມບໍ່ຮູ້ໃນທຸກ ຯລຯ ຕາໜ່າງຄືອະວິດຊາ ອະກຸສົນມູນຄືໂມຫະ

ຄຳວ່າ ລະຣາຄະ ໂທສະ ແລະໂມຫະ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ລະ ລະຖິ້ມ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງຣາຄະ ໂທສະ ແລະໂມຫະ ລວມຄວາມວ່າ ລະຣາຄະ ໂທສະ ແລະໂມຫະ

## ວ່າດ້ວຍສັງໂຍດ ໑໐

ຄຳວ່າ ທຳລາຍສັງໂຍດໄດ້ແລ້ວ ໄດ້ແກ່ ສັງໂຍດ ໑໐ ຢ່າງ ຄື

໑. ການຣາຄະສັງໂຍດ
໒. ປະຕິຄະສັງໂຍດ
ຯລຯ
໑໐. ອະວິດຊາສັງໂຍດ

ຄຳວ່າ ທຳລາຍສັງໂຍດໄດ້ແລ້ວ ອະທິບາຍວ່າ ທຳລາຍ ຄື ທະລາຍ ເຮັດໃຫ້ພັງ ເຮັດໃຫ້ພັງທະລາຍ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກເຊິ່ງສັງໂຍດ ໑໐ ຢ່າງ ລວມຄວາມວ່າ ທຳລາຍສັງໂຍດໄດ້ແລ້ວ

ຄຳວ່າ ບໍ່ສະດຸ້ງໃນເວລາສິ້ນຊີວິດ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ໃນເວລາຈົບຊີວິດ ກໍບໍ່ສະດຸ້ງ ບໍ່ຫວາດຫວັ່ນ ບໍ່ຫວາດສຽວ ບໍ່ສະທົກສະທ້ານ ບໍ່ຕົກໃຈ ບໍ່ຢ້ານກົວ ບໍ່ຢ້ານ ບໍ່ຫວາດສຽວ ບໍ່ສະດຸ້ງ ບໍ່ໜີ ລະໄພແລະຄວາມຢ້ານກົວໄດ້ແລ້ວ ໝົດຄວາມຂົນພອງສະຫຍອງເກົ້າຢູ່ ລວມຄວາມວ່າ ບໍ່ສະດຸ້ງໃນເວລາສິ້ນຊີວິດ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນ ພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງ ກ່າວວ່າ

(ພຣະປັດເຈກສຳພຸດທະເຈົ້າ) ລະຣາຄະ ໂທສະ ແລະໂມຫະ
ທຳລາຍສັງໂຍດໄດ້ແລ້ວ ບໍ່ສະດຸ້ງໃນເວລາສິ້ນຊີວິດ
ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

[໑໖໑] (ພຣະປັດເຈກສຳພຸດທະເຈົ້າກ່າວວ່າ)

ທຸກວັນນີ້ມິດທັງຫຼາຍມີປະໂຫຍດເປັນເຫດ
ຈຶ່ງຄົບແລະເສບດ້ວຍ ມິດທີ່ບໍ່ມຸ້ງປະໂຫຍດຫາໄດ້ຍາກ
ມະນຸດທັງຫຼາຍມີປັນຍາມຸ້ງປະໂຫຍດຕົນບໍ່ສະອາດ
ພຣະປັດເຈກສຳພຸດທະເຈົ້າ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ (໑໐)

ຄຳວ່າ ມີປະໂຫຍດເປັນເຫດຈຶ່ງຄົບແລະເສບດ້ວຍ ອະທິບາຍວ່າ ມິດທັງຫຼາຍມີປະໂຫຍດຕົນເປັນເຫດ ມີປະໂຫຍດຜູ້ອື່ນເປັນເຫດ ມີປະໂຫຍດທັງສອງຝ່າຍເປັນເຫດ ມີປະໂຫຍດໃນພົບປັດຈຸບັນເປັນເຫດ ມີປະໂຫຍດໃນພົບໜ້າເປັນເຫດ ມີປະໂຫຍດຢ່າງຍິ່ງເປັນເຫດ ຈຶ່ງຄົບ ຄື ຄົບຫາ ເສບ ເສບເປັນມິດ ຊ່ອງເສບ ເສບສະເພາະ ລວມຄວາມວ່າ ມີປະໂຫຍດເປັນເຫດຈຶ່ງຄົບແລະເສບດ້ວຍ

ຄຳວ່າ ທຸກວັນນີ້ມິດທັງຫຼາຍໆລໆມິດທີ່ບໍ່ມຸ້ງປະໂຫຍດຫາໄດ້ຍາກ ອະທິບາຍວ່າ ມິດມີ ໒ ຈຳພວກ ຄື

໑. ອາຄາຣິກະມິດ (ມິດຄອງເຮືອນ)
໒. ອະນາຄາຣິກະມິດ (ມິດບໍ່ຄອງເຮືອນ)

ໆລໆ ນີ້ຊື່ວ່າອາຄາຣິກະມິດ ໆລໆ ນີ້ຊື່ວ່າ ອະນາຄາຣິກະມິດ

ຄຳວ່າ ທຸກວັນນີ້ມິດທັງຫຼາຍ ໆລໆ ມິດທີ່ບໍ່ມຸ້ງປະໂຫຍດຫາໄດ້ຍາກ ອະທິບາຍວ່າ ມິດ ໒ ຈຳພວກ ເຫຼົ່ານີ້ ບໍ່ມີເຫດ ບໍ່ມຸ້ງປະໂຫຍດ ຄື ຫາເຫດບໍ່ໄດ້ ບໍ່ມີປັດໄຈ ຫາໄດ້ຍາກ ໄດ້ຍາກແສນຍາກ ລວມຄວາມວ່າ ທຸກວັນນີ້ມິດທັງຫຼາຍ ໆລໆ ມິດທີ່ບໍ່ມຸ້ງປະໂຫຍດຫາໄດ້ຍາກ

ຄຳວ່າ ມີປັນຍາມຸ້ງປະໂຫຍດຕົນ ໃນຄຳວ່າ ມະນຸດທັງຫຼາຍມີປັນຍາມຸ້ງປະໂຫຍດຕົນບໍ່ສະອາດ ອະທິບາຍວ່າ ເຫຼົ່າມະນຸດຄົບ ຄົບຫາ ເສບ ເສບເປັນມິດຊ່ອງເສບ ເສບສະເພາະ ປະພຶດເອື້ອເຟື້ອ ປະພຶດເອື້ອເຟື້ອໂດຍຊອບ ເຂົ້າໄປນັ່ງໃກ້ ໄຕ່ຖາມ ຖາມບັນຫາ ເພື່ອປະໂຫຍດຂອງຕົນ ຍ້ອນເຫດແຫ່ງຕົນ ຍ້ອນປັດໄຈແຫ່ງຕົນ ຍ້ອນການແຫ່ງຕົນ ລວມຄວາມວ່າມີປັນຍາມຸ້ງປະໂຫຍດຕົນ

## ວ່າດ້ວຍກຳບໍ່ສະອາດ

ຄຳວ່າ ມະນຸດທັງຫຼາຍໆລໆ ບໍ່ສະອາດ ອະທິບາຍວ່າ
ຍ້ອນປະກອບດ້ວຍກາຍຍະກຳອັນບໍ່ສະອາດ ມະນຸດທັງຫຼາຍ ຈຶ່ງຊື່ວ່າບໍ່ສະອາດ
ຍ້ອນປະກອບດ້ວຍວະຈີກຳອັນບໍ່ສະອາດ ມະນຸດທັງຫຼາຍ ຈຶ່ງຊື່ວ່າບໍ່ສະອາດ

ຍ້ອນປະກອບດ້ວຍມະໂນກຳອັນບໍ່ສະອາດ ມະນຸດທັງຫຼາຍ ຈຶ່ງຊື່ວ່າບໍ່ສະອາດ

ຍ້ອນປະກອບດ້ວຍປານາຕິບາດອັນບໍ່ສະອາດ ໆລໆ

ໆລໆ ອະທິນນາທານອັນບໍ່ສະອາດ ໆລໆ

ໆລໆ ກາເມສຸມິດສາຈານອັນບໍ່ສະອາດ ໆລໆ

ໆລໆ ມຸສາວາດອັນບໍ່ສະອາດ ໆລໆ

ໆລໆ ປິສຸນາວາຈາອັນບໍ່ສະອາດ ໆລໆ

ໆລໆ ຜະຣຸສະວາຈາອັນບໍ່ສະອາດ ໆລໆ

ໆລໆ ສຳຜັບປະລາປະອັນບໍ່ສະອາດ ໆລໆ

ໆລໆ ອະພິດຊາອັນບໍ່ສະອາດ ໆລໆ

ໆລໆ ພະຍາບາດອັນບໍ່ສະອາດ ໆລໆ

ຍ້ອນປະກອບດ້ວຍມິດສາທິດຖິອັນບໍ່ສະອາດ ມະນຸດທັງຫຼາຍ ຈຶ່ງຊື່ວ່າບໍ່ສະອາດ

ຍ້ອນປະກອບດ້ວຍເຈຕະນາອັນບໍ່ສະອາດ ມະນຸດທັງຫຼາຍ ຈຶ່ງຊື່ວ່າບໍ່ສະອາດ

ຍ້ອນປະກອບດ້ວຍຄວາມປາຖະໜາອັນບໍ່ສະອາດ ມະນຸດທັງຫຼາຍ ຈຶ່ງຊື່ວ່າບໍ່ສະອາດ

ຍ້ອນປະກອບດ້ວຍປະນິທານ (ຄວາມຕັ້ງໃຈ) ອັນບໍ່ສະອາດ ມະນຸດທັງຫຼາຍ ຈຶ່ງຊື່ວ່າບໍ່ສະອາດ ຄື ຊົ່ວ ຊາມ ຕ່ຳຊາມ ຕ່ຳ ໜ້າຣັງກຽດ ຫຍາບຊ້າ ລວມຄວາມວ່າ ມະນຸດທັງຫຼາຍມີປັນຍາມຸ້ງປະໂຫຍດຕົນ ບໍ່ສະອາດ

ຄຳວ່າ ຜູ້ດຽວ ໃນຄຳວ່າ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ອະທິບາຍວ່າ ພຣະປັດເຈກສຳພຸດທະເຈົ້ານັ້ນ ຊື່ວ່າຜູ້ດຽວ ຍ້ອນສ່ວນແຫ່ງການບັນພະຊາ ໆລໆ

ຄຳວ່າ ປະພຶດ ໄດ້ແກ່ ຄວາມປະພຶດ ໘ ຢ່າງ ໆລໆ

ຄຳວ່າ ເໝືອນນໍແຮດ ອະທິບາຍວ່າ ທຳມະດາແຮດ ມີນໍດຽວ ບໍ່ມີນໍທີສອງ ສັນໃດ ໆລໆ ລວມຄວາມວ່າ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ ດ້ວຍເຫດນັ້ນພຣະປັດເຈກສຳພຸດທະເຈົ້ານັ້ນຈຶ່ງກ່າວວ່າ

ທຸກວັນນີ້ມິດທັງຫຼາຍມີປະໂຫຍດເປັນເຫດ
ຈຶ່ງຄົບແລະເສບດ້ວຍ ມິດທີ່ບໍ່ມຸ້ງປະໂຫຍດຫາໄດ້ຍາກ
ມະນຸດທັງຫຼາຍມີປັນຍາມຸ້ງປະໂຫຍດຕົນບໍ່ສະອາດ
ພຣະປັດເຈກສຳພຸດທະເຈົ້າ ຈຶ່ງປະພຶດຢູ່ຜູ້ດຽວ ເໝືອນນໍແຮດ

**ຈະຕຸດຖະວັກຈົບ**

**ຂັກຄະວິສານະສູດຕະນິດເທດທີ ໑໗ ຈົບ**

ການອະທິບາຍຄຳສອນແກ່ພາມ ຜູ້ເຖິງຝັ່ງ ໑໖ ຄົນເຫຼົ່ານີ້ ຄື

| | |
|---|---|
| (໑) ອະຊິຕະ | (໒) ຕິດສະເມດເຕີຍຍະ |
| (໓) ປຸນນະກະ | (໔) ເມດຕະຄູ |
| (໕) ໂທຕະກະ | (໖) ອຸປະສີວະ |
| (໗) ນັນທະ | (໘) ເຫມະກະ |
| (໙) ໂຕເທີຍຍະ | (໑໐) ກັບປະ |
| (໑໑) ຊະຕຸກັນນີຜູ້ເປັນບັນດິດ | (໑໒) ພັດທະຣາວຸດ |
| (໑໓) ອຸໄທ | (໑໔) ໂປສາລະຜູ້ເປັນພາມ |
| (໑໕) ໂມຄະຣາດຜູ້ມີປັນຍາ | (໑໖) ປິງຄິຍະຜູ້ເປັນມະຫາຣືສີ |

ມີປະມານເທົ່ານີ້ແລ

ແມ່ນການອະທິບາຍຂັກຄະວິສານະສຸຕະຣະກຳມີປະມານເທົ່ານີ້

ນິດເທດທີຄວນຮູ້ທັງ ໒ ພາກ ທ່ານກໍານົດເຮັດໄວ້ບໍລິບູນດີແລ້ວ

**ຈູລະນິດເທດ ຈົບບໍລິບູນ**